# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໑໘

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໖

## ມັດຊິມະນິກາຍ ອຸປະຣິປັນນາດ



ສະບັບຄົ້ນຄ້ົວວັດທາດຫຼວງເໜືອ
ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໔໕໕໕-໔໕໕໗ ເປັນຈຳນວນ ໕໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາລົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໔ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໔ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາລະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໑໘

# ພຣະສຸດຕັນຕະປິດົກ

## ເຫຼັ້ມທີ ໑໐

## ມັດຊິມະນິກາຍ ອຸປະຣິປັນນາດ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ**

# ໑. ເທວະທະຫະວັກ

**ໝວດວ່າດ້ວຍພຣະທຳເທດສະໜາທີ່ເທວະທະຫະນິຄົມ**

## ໑. ເທວະທະຫະສູດ

**ວ່າດ້ວຍພຣະທຳເທດສະໜາທີ່ເທວະທະຫະນິຄົມ**

**ວາທະຂອງນິຄົນ**

[໑] ຂ້າພະເຈົ້າ ໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ນິຄົມຂອງເຈົ້າສາກະຍະຊື່ ເທວະທະຫະ ແຄວັ້ນສັກກະ ຢູ່ບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍ ຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ "ບຸຣຸດບຸກ ຄົນນີ້ສະເຫວີຍສຸກແດ່ ສະເຫວີຍທຸກແດ່ ສະເຫວີຍອະທຸກຂະມະສຸຂະແດ່ ທັງໝົດນັ້ນ ຍ້ອນ ເຫດແຫ່ງກຳທີ່ເຮັດໄວ້ໃນຊາດກ່ອນ ຍ້ອນກຳເກົ່າສິ້ນສຸດດ້ວຍຕະບະ (ການພ່ຳເພັງ ພຽນຢ່າງ ໜັກ) ຍ້ອນບໍ່ເຮັດກຳໃໝ່ ຈຶ່ງບໍ່ຕົກຢູ່ໃຕ້ອຳນາດ (ແຫ່ງກຳ) ຕໍ່ໄປ ຍ້ອນບໍ່ເປັນໄປຕາມອຳນາດ

ແຫ່ງກຳຕໍ່ໄປ ກຳຈຶ່ງໝົດໄປ ຍ້ອນກຳໝົດໄປ ທຸກຈຶ່ງໝົດໄປ ຍ້ອນທຸກໝົດໄປ ເວທະນາຈຶ່ງໝົດໄປ ຍ້ອນເວທະນາໝົດໄປ ທຸກທັງປວງຈຶ່ງຈັກເປັນອັນສະຫຼາຍຫາຍໄປ" ນິຄົນທັງຫຼາຍ ເປັນຜູ້ມີວາທະແນວນີ້

ພິກຂຸທັງຫຼາຍ ເຮົາເຂົ້າໄປຫານິຄົນທັງຫຼາຍຜູ້ມີວາທະແນວນີ້ ແລ້ວຖາມແນວນີ້ວ່າ "ນິຄົນຜູ້ມີອາຍຸທັງຫຼາຍ ໄດ້ຂ່າວວ່າ ທ່ານທັງຫຼາຍມີວາທະແນວນີ້ ມີທິດຖິແນວນີ້ວ່າ "ບຸຣຸດບຸກຄົນນີ້ສະເຫວີຍສຸກແດ່ ສະເຫວີຍທຸກແດ່ ສະເຫວີຍອະທຸກຂະມະສຸຂະແດ່ ທັງໝົດນັ້ນ ຍ້ອນເຫດແຫ່ງກຳທີ່ເຮັດໄວ້ໃນຊາດກ່ອນ ຍ້ອນກຳເກົ່າສິ້ນສຸດດ້ວຍຕະບະ ຍ້ອນບໍ່ເຮັດກຳໃໝ່ ຈຶ່ງບໍ່ຕົກຢູ່ໃຕ້ອຳນາດ (ແຫ່ງກຳ) ຕໍ່ໄປ ຍ້ອນບໍ່ເປັນໄປຕາມອຳນາດແຫ່ງກຳຕໍ່ໄປ ກຳຈຶ່ງໝົດໄປ ຍ້ອນກຳໝົດໄປ ທຸກຈຶ່ງໝົດໄປ ຍ້ອນທຸກໝົດໄປ ເວທະນາຈຶ່ງໝົດໄປ ຍ້ອນເວທະນາໝົດໄປ ທຸກທັງປວງຈຶ່ງຈັກເປັນອັນສະຫຼາຍໄປ" ແມ່ນບໍ?"  ນິຄົນເຫຼົ່ານັ້ນ ຖືກເຮົາຖາມແນວນີ້ແລ້ວ ໄດ້ປະຕິຍານວ່າ "ແມ່ນ"

ເຮົາຈຶ່ງຖາມນິຄົນເຫຼົ່ານັ້ນແນວນີ້ວ່າ "ນິຄົນຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍຮູ້ບໍວ່າ "ເຮົາທັງຫຼາຍໄດ້ມີແລ້ວໃນຊາດກ່ອນ ບໍ່ແມ່ນບໍ່ໄດ້ມີແລ້ວ"

ນິຄົນເຫຼົ່ານັ້ນຕອບວ່າ "ບໍ່ຮູ້ ທ່ານຜູ້ມີອາຍຸ"

"ນິຄົນຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍຮູ້ບໍວ່າ "ເຮົາທັງຫຼາຍໄດ້ເຮັດບາບກຳໄວ້ໃນຊາດກ່ອນ ບໍ່ແມ່ນບໍ່ໄດ້ເຮັດໄວ້"

"ບໍ່ຮູ້ ທ່ານຜູ້ມີອາຍຸ"

"ນິຄົນຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍຮູ້ບໍວ່າ "ເຮົາທັງຫຼາຍໄດ້ເຮັດບາບກຳໄວ້ແນວນັ້ນແດ່ ແນວນີ້ແດ່"

"ບໍ່ຮູ້ ທ່ານຜູ້ມີອາຍຸ"

"ນິຄົນຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍຮູ້ບໍວ່າ "ທຸກປະມານທີ່ນີ້ສະຫຼາຍຫາຍໄປແລ້ວ ທຸກປະມານທີ່ນີ້ເຮົາເພິ່ງໃຫ້ສະຫຼາຍໄປ ຫຼື ເມື່ອທຸກປະມານທີ່ນີ້ສະຫຼາຍຫາຍໄປແລ້ວ ທຸກທັງປວງຈຶ່ງຈັກເປັນອັນສະຫຼາຍໄປ"

"ບໍ່ຮູ້ ທ່ານຜູ້ມີອາຍຸ"

"ນິຄົນຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍຮູ້ການລະອະກຸສົນທຳ ແລະ ການພ່ຳເພັງກຸສົນທຳໃນປັດຈຸບັນບໍ?"

"ບໍ່ຮູ້ ທ່ານຜູ້ມີອາຍຸ"

[໔] "ນິຄັນຜູ້ມີອາຍຸທັງຫຼາຍ ໄດ້ຂ່າວວ່າ ທ່ານທັງຫຼາຍບໍ່ຮູ້ດັ່ງນີ້ວ່າ "ເຮົາທັງຫຼາຍໄດ້ມີແລ້ວໃນຊາດກ່ອນ ບໍ່ແມ່ນບໍ່ໄດ້ມີແລ້ວ"

ບໍ່ຮູ້ວ່າ "ເຮົາທັງຫຼາຍໄດ້ເຮັດບາບກຳໄວ້ໃນຊາດກ່ອນ ບໍ່ແມ່ນບໍ່ໄດ້ເຮັດໄວ້"
ບໍ່ຮູ້ວ່າ "ເຮົາທັງຫຼາຍໄດ້ເຮັດບາບກຳໄວ້ແນວນັ້ນແດ່ ແນວນີ້ແດ່"
ບໍ່ຮູ້ວ່າ "ທຸກປະມານທີ່ນີ້ສະຫຼາຍຫາຍໄປແລ້ວ ທຸກປະມານທີ່ນີ້ເຮົາເພິ່ງໃຫ້ສະຫຼາຍໄປ ຫຼື ເມື່ອທຸກປະມານທີ່ນີ້ສະຫຼາຍຫາຍໄປແລ້ວ ທຸກທັງປວງຈຶ່ງຈັກເປັນອັນສະຫຼາຍໄປ"

ທ່ານທັງຫຼາຍ ບໍ່ຮູ້ການລະອະກຸສົນທຳ ແລະ ການພ່ຳເພັງກຸສົນທຳໃນປັດຈຸບັນ ເມື່ອເປັນແນວນີ້ ນິຄັນຜູ້ມີອາຍຸທັງຫຼາຍ ຈຶ່ງບໍ່ຄວນພະຍາກອນວ່າ "ບຸຣຸດບຸກຄົນນີ້ສະເຫວີຍສຸກແດ່ ສະເຫວີຍທຸກແດ່ ສະເຫວີຍອະທຸກຂະມະສຸຂະແດ່ ທັງໝົດນັ້ນ ຍ້ອນເຫດແຫ່ງກຳທີ່ເຮັດໄວ້ໃນຊາດກ່ອນ ຍ້ອນກຳເກົ່າສິ້ນສຸດດ້ວຍຕະບະ ຍ້ອນບໍ່ເຮັດກຳໃໝ່ ຈຶ່ງບໍ່ຕົກຢູ່ໃຕ້ອຳນາດ(ແຫ່ງກຳ)ຕໍ່ໄປ ຍ້ອນບໍ່ເປັນໄປຕາມອຳນາດແຫ່ງກຳຕໍ່ໄປ ກຳຈຶ່ງໝົດໄປ ຍ້ອນກຳໝົດໄປ ທຸກຈຶ່ງໝົດໄປ ຍ້ອນທຸກໝົດໄປ ເວທະນາຈຶ່ງໝົດໄປ ຍ້ອນເວທະນາໝົດໄປ ທຸກທັງປວງຈຶ່ງຈັກເປັນອັນສະຫຼາຍໄປ"

ນິຄັນຜູ້ມີອາຍຸທັງຫຼາຍ ຖ້າທ່ານທັງຫຼາຍເພິ່ງຮູ້ວ່າ "ເຮົາທັງຫຼາຍໄດ້ມີແລ້ວໃນຊາດກ່ອນ ບໍ່ແມ່ນບໍ່ໄດ້ມີແລ້ວ"

ເພິ່ງຮູ້ວ່າ "ເຮົາທັງຫຼາຍໄດ້ເຮັດບາບກຳໄວ້ໃນຊາດກ່ອນ ບໍ່ແມ່ນບໍ່ໄດ້ເຮັດໄວ້"
ເພິ່ງຮູ້ວ່າ "ເຮົາທັງຫຼາຍໄດ້ເຮັດບາບກຳໄວ້ແນວນັ້ນແດ່ ແນວນີ້ແດ່"
ເພິ່ງຮູ້ວ່າ "ທຸກປະມານທີ່ນີ້ສະຫຼາຍຫາຍໄປແລ້ວ ທຸກປະມານທີ່ນີ້ເຮົາເພິ່ງໃຫ້ສະຫຼາຍໄປ ຫຼືເມື່ອທຸກປະມານທີ່ນີ້ສະຫຼາຍຫາຍໄປແລ້ວ ທຸກທັງປວງຈຶ່ງຈັກເປັນອັນສະຫຼາຍໄປ"
ທ່ານທັງຫຼາຍເພິ່ງຮູ້ການລະອະກຸສົນທຳແລະການພ່ຳເພັງກຸສົນທຳໃນປັດຈຸບັນ໑ ເມື່ອເປັນແນວນີ້ ນິຄັນຜູ້ມີອາຍຸທັງຫຼາຍຈຶ່ງຄວນພະຍາກອນວ່າ "ບຸຣຸດບຸກຄົນນີ້ສະເຫວີຍສຸກແດ່ ສະເຫວີຍທຸກແດ່ ສະເຫວີຍອະທຸກຂະມະສຸຂະແດ່ ທັງໝົດນັ້ນ ຍ້ອນເຫດແຫ່ງກຳທີ່ເຮັດໄວ້ໃນຊາດກ່ອນ ຍ້ອນກຳເກົ່າສິ້ນສຸດດ້ວຍຕະບະ ຍ້ອນບໍ່ເຮັດກຳໃໝ່ ຈຶ່ງບໍ່ຕົກຢູ່ໃຕ້ອຳນາດ(ແຫ່ງກຳ)ຕໍ່ໄປ ຍ້ອນບໍ່ເປັນໄປຕາມອຳນາດແຫ່ງກຳຕໍ່ໄປ ກຳຈຶ່ງໝົດໄປ ຍ້ອນກຳໝົດໄປ ທຸກຈຶ່ງໝົດໄປ ຍ້ອນທຸກໝົດໄປ ເວທະນາຈຶ່ງໝົດໄປ ຍ້ອນເວທະນາໝົດໄປ ທຸກທັງປວງຈຶ່ງຈັກເປັນອັນສະຫຼາຍໄປ"

[໓] ນິຄັນຜູ້ມີອາຍຸທັງຫຼາຍ ປຽບຄື ບຸຣຸດຖືກຍິງດ້ວຍລູກສອນອາບຢາພິດແນວຮ້າຍແຮງ

ຍ້ອນເຫດແຫ່ງການຖືກລູກສອນແທງ ບຸຣຸດນັ້ນເພິ່ງສະເຫວີຍທຸກຂະເວທະນາອັນກ້າແຂງເຜັດຮ້ອນ ມີດອຳນາດ ຍາດສາໂລຫິດຂອງເຂົາຈຶ່ງຫາໝໍປາດມາປິ່ນປົວ ໝໍປາດນັ້ນໃຊ້ມີດປາດປາກບາດຂອງບຸຣຸດນັ້ນ ຍ້ອນເຫດແຫ່ງການໃຊ້ມີດປາດປາກບາດ ບຸຣຸດນັ້ນເພິ່ງສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ໝໍປາດນັ້ນ ຈຶ່ງໃຊ້ເຄື່ອງມືກວດຫາລູກສອນ (ໃນບາດ)ຂອງເຂົາ ຍ້ອນເຫດແຫ່ງການກວດຫາລູກສອນ ບຸຣຸດນັ້ນ ເພິ່ງສະເຫວີຍທຸກຂະເວທະນາກ້າ ເຜັດຮ້ອນ ໝໍປາດນັ້ນຈຶ່ງດຶງລູກສອນອອກ ຍ້ອນເຫດແຫ່ງການດຶງລູກສອນອອກ ບຸຣຸດນັ້ນເພິ່ງສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ໝໍປາດນັ້ນໃສ່ຢາຖອນພິດທີ່ປາກບາດ ຍ້ອນເຫດແຫ່ງການໃສ່ຢາຖອນພິດທີ່ປາກບາດ ບຸຣຸດນັ້ນເພິ່ງສະເຫວີຍທຸກຂະເວທະນາອັນແຮງກ້າເຜັດຮ້ອນ

ຕໍ່ມາ ຍ້ອນປາກບາດດີ ມີຜິວໜັງກຸ້ມ ບຸຣຸດນັ້ນຈຶ່ງດີພະຍາດ ມີຄວາມສຸກ ມີຄວາມເສລີຢູ່ຕາມລຳພັງໄດ້ ຍ່າງໄດ້ຕາມປາຖະໜາ ເຂົາຄິດແນວນີ້ວ່າ "ແຕ່ກ່ອນເຮົາຖືກຍິງດ້ວຍລູກສອນອາບຢາພິດແນວຮ້າຍແຮງ ຍ້ອນເຫດແຫ່ງການຖືກລູກສອນແທງ ເຮົານັ້ນໄດ້ສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ມີດອຳນາດ ຍາດສາໂລຫິດຂອງເຮົາຈຶ່ງຫາໝໍປາດມາປິ່ນປົວໝໍປາດນັ້ນໃຊ້ມີດປາດປາກບາດຂອງເຮົາ ຍ້ອນເຫດແຫ່ງການໃຊ້ມີດປາດປາກບາດ ເຮົານັ້ນໄດ້ສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ໝໍປາດນັ້ນຈຶ່ງໃຊ້ເຄື່ອງມືກວດຫາລູກສອນ (ໃນບາດ) ຂອງເຮົາ ຍ້ອນເຫດແຫ່ງການກວດຫາລູກສອນ ເຮົານັ້ນ ໄດ້ສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ໝໍປາດນັ້ນໄດ້ດຶງລູກສອນອອກ ຍ້ອນເຫດແຫ່ງການດຶງລູກສອນອອກ ເຮົານັ້ນໄດ້ສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ໝໍປາດນັ້ນໃສ່ຢາຖອນພິດທີ່ປາກບາດ ຍ້ອນເຫດແຫ່ງການໃສ່ຢາຖອນພິດທີ່ປາກບາດ ເຮົານັ້ນໄດ້ສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ບັດນີ້ ຍ້ອນປາກບາດດີ ມີຜິວໜັງກຸ້ມ ເຮົານັ້ນຈຶ່ງດີພະຍາດ ມີຄວາມສຸກ ມີຄວາມເສລີ ຢູ່ຕາມລຳພັງໄດ້ ຍ່າງໄດ້ຕາມປາ ຖະໜາ" ແມ່ນສັນໃດ

ນິຄົນຜູ້ມີອາຍຸທັງຫຼາຍ ຖ້າທ່ານທັງຫຼາຍເພິ່ງຮູ້ວ່າ "ເຮົາທັງຫຼາຍໄດ້ມີແລ້ວໃນຊາດກ່ອນບໍ່ແມ່ນບໍ່ໄດ້ມີແລ້ວ"

ເພິ່ງຮູ້ວ່າ "ເຮົາທັງຫຼາຍໄດ້ເຮັດບາບກຳໄວ້ໃນຊາດກ່ອນ ບໍ່ແມ່ນບໍ່ໄດ້ເຮັດໄວ້"

ເພິ່ງຮູ້ວ່າ "ເຮົາທັງຫຼາຍໄດ້ເຮັດບາບກຳໄວ້ແນວນັ້ນແດ່ ແນວນີ້ແດ່"

ເພິ່ງຮູ້ວ່າ "ທຸກປະມານທໍ່ນີ້ສະຫຼາຍຫາຍໄປແລ້ວ ທຸກປະມານທໍ່ນີ້ເຮົາເພິ່ງໃຫ້ສະຫຼາຍໄປຫຼືເມື່ອທຸກປະມານທໍ່ນີ້ສະຫຼາຍຫາຍໄປແລ້ວ ທຸກທັງປວງຈຶ່ງຈັກເປັນອັນສະຫຼາຍໄປ"

ທ່ານທັງຫຼາຍເພິ່ງຮູ້ການລະອະກຸສົນທຳ ແລະ ການພໍ່າເພັງກຸສົນທຳໃນປັດຈຸບັນ ເມື່ອ

ເປັນແນວນີ້ ນິຄົນຜູ້ມີອາຍຸທັງຫຼາຍຈຶ່ງຄວນພະຍາກອນວ່າ "ບຸຣຸດບຸກຄົນນີ້ສະເຫວີຍສຸກແດ່ ສະເຫວີຍທຸກແດ່ ສະເຫວີຍອະທຸກຂະມະສຸຂະແດ່ ທັງໝົດນັ້ນ ຍ້ອນເຫດແຫ່ງກຳທີ່ເຮັດໄວ້ໃນຊາດກ່ອນ ຍ້ອນກຳເກົ່າສິ້ນສຸດດ້ວຍຕະບະ ຍ້ອນບໍ່ເຮັດກຳໃໝ່ ຈຶ່ງບໍ່ຕົກຢູ່ໃຕ້ອຳນາດ(ແຫ່ງກຳ) ຕໍ່ໄປ ຍ້ອນບໍ່ເປັນໄປຕາມອຳນາດແຫ່ງກຳຕໍ່ໄປ ກຳຈຶ່ງໝົດໄປ ຍ້ອນກຳໝົດໄປທຸກຈຶ່ງໝົດໄປ ຍ້ອນທຸກໝົດໄປເວທະນາຈຶ່ງໝົດໄປ ຍ້ອນເວທະນາໝົດໄປທຸກທັງປວງຈຶ່ງຈັກເປັນອັນສະຫຼາຍໄປ" ກໍຄືກັນສັນນັ້ນ

ນິຄົນຜູ້ມີອາຍຸທັງຫຼາຍ ແຕ່ຍ້ອນເຫດທີ່ທ່ານທັງຫຼາຍບໍ່ຮູ້ວ່າ "ເຮົາທັງຫຼາຍໄດ້ມີແລ້ວໃນຊາດກ່ອນ ບໍ່ແມ່ນບໍ່ໄດ້ມີແລ້ວ"

ບໍ່ຮູ້ວ່າ "ເຮົາທັງຫຼາຍໄດ້ເຮັດບາບກຳໄວ້ໃນຊາດກ່ອນ ບໍ່ແມ່ນບໍ່ໄດ້ເຮັດໄວ້"

ບໍ່ຮູ້ວ່າ "ເຮົາທັງຫຼາຍໄດ້ເຮັດບາບກຳໄວ້ແນວນັ້ນແດ່ ແນວນີ້ແດ່"

ບໍ່ຮູ້ວ່າ "ທຸກປະມານທໍ່ນີ້ສະຫຼາຍຫາຍໄປແລ້ວ ທຸກປະມານທໍ່ນີ້ເຮົາເພິ່ງໃຫ້ສະຫຼາຍໄປ ຫຼື ເມື່ອທຸກປະມານທໍ່ນີ້ສະຫຼາຍຫາຍໄປແລ້ວ ທຸກທັງປວງຈຶ່ງຈັກເປັນອັນສະຫຼາຍຫາຍໄປ"

ທ່ານທັງຫຼາຍບໍ່ຮູ້ການລະອະກຸສົນທຳ ແລ ະການພໍ່າເພັງກຸສົນທຳທັງຫຼາຍໃນປັດຈຸບັນສັນນັ້ນ ນິຄົນຜູ້ມີອາຍຸທັງຫຼາຍຈຶ່ງບໍ່ຄວນພະຍາກອນວ່າ "ບຸຣຸດບຸກຄົນນີ້ສະເຫວີຍສຸກແດ່ ສະເຫວີຍທຸກແດ່ ສະເຫວີຍອະທຸກຂະມະສຸຂະແດ່ ທັງໝົດນັ້ນ ຍ້ອນເຫດແຫ່ງກຳທີ່ເຮັດໄວ້ໃນຊາດກ່ອນ ຍ້ອນກຳເກົ່າສິ້ນສຸດດ້ວຍຕະບະ ຍ້ອນບໍ່ເຮັດກຳໃໝ່ ຈຶ່ງບໍ່ຕົກຢູ່ໃຕ້ອຳນາດ (ແຫ່ງກຳ) ຕໍ່ໄປ ຍ້ອນບໍ່ເປັນໄປຕາມອຳນາດແຫ່ງກຳຕໍ່ໄປກຳຈຶ່ງໝົດໄປ ຍ້ອນກຳໝົດໄປທຸກຈຶ່ງໝົດໄປຍ້ອນທຸກໝົດໄປເວທະນາຈຶ່ງໝົດໄປ ຍ້ອນເວທະນາໝົດໄປທຸກທັງປວງຈຶ່ງຈັກເປັນອັນສະຫຼາຍໄປ"

[໔] ພິກຂຸທັງຫຼາຍ ເມື່ອເຮົາກ່າວແນວນີ້ແລ້ວ ນິຄົນເຫຼົ່ານັ້ນໄດ້ກ່າວກັບເຮົາວ່າ "ທ່ານຜູ້ມີອາຍຸ ນິຄົນ ນາຕະບຸດເປັນສັບພັນຍູ (ຜູ້ຮູ້ທຳທັງປວງ) ເຫັນສິ່ງທັງປວງ ປະຕິຍານຍານທັດສະນະ°ຢ່າງຄົບຖ້ວນວ່າ "ເມື່ອເຮົາຍ່າງ ຢືນ ຫຼັບ ແລະ ຕື່ນຢູ່ ຍານທັດສະນະໄດ້ຜາກົດຕໍ່ເນື່ອງຕະຫຼອດໄປ" ນິຄົນນາຕະບຸດນັ້ນ ກ່າວແນວນີ້ວ່າ "ນິຄົນຜູ້ມີອາຍຸທັງຫຼາຍ ບາບກຳທີ່ທ່ານທັງຫຼາຍເຮັດໄວ້ໃນຊາດກ່ອນມີຢູ່ ທ່ານທັງຫຼາຍຈົ່ງກຳຈັດບາບກຳນັ້ນ ດ້ວຍປະຕິປະທາທີ່ເຮັດໄດ້ຍາກເຜັດຮ້ອນນີ້ ການທີ່ທ່ານທັງຫຼາຍສັງລວມກາຍ ສັງລວມວາຈາ ສັງລວມໃຈ ໃນບັດນີ້ນັ້ນ ຊື່ວ່າເປັນການບໍ່ກະທຳບາບກຳຕໍ່ໄປ ຍ້ອນກຳເກົ່າສິ້ນສຸດດ້ວຍຕະບະ ຍ້ອນບໍ່ເຮັດກຳໃໝ່ ຈຶ່ງບໍ່ຕົກຢູ່ໃຕ້ອຳນາດ (ແຫ່ງກຳ) ຕໍ່ໄປ ຍ້ອນບໍ່ເປັນໄປຕາມອຳນາດແຫ່ງກຳຕໍ່ໄປ ກຳຈຶ່ງໝົດໄປຍ້ອນກຳໝົດໄປທຸກຈຶ່ງໝົດໄປ ຍ້ອນທຸກໝົດໄປເວທະນາຈຶ່ງໝົດໄປ ຍ້ອນເວທະນາໝົດໄປທຸກທັງປວງຈຶ່ງຈັກເປັນອັນສະຫຼາຍໄປ" ຄຳທີ່ນິຄົນນາຕະບຸດກ່າວແລ້ວນັ້ນຖືກໃຈ ແລະ ພໍໃຈຂ້າພະເຈົ້າທັງຫຼາຍ ຍ້ອນເຫດນັ້ນ ຂ້າພະເຈົ້າທັງຫຼາຍຈຶ່ງມີໃຈຍິນດີ"

[໕] ພິກຂຸທັງຫຼາຍ ເມື່ອນິຄັນເຫຼົ່ານັ້ນກ່າວແນວນີ້ແລ້ວ ເຮົາໄດ້ກ່າວກັບນິຄັນເຫຼົ່ານັ້ນວ່າ

"ນິຄັນຜູ້ມີອາຍຸທັງຫຼາຍ ທຳ ໕ ປະການນີ້ມີຜົນ ໔ ຢ່າງໃນປັດຈຸບັນ

ທຳ ໕ ປະການ ອັນໃດແດ່ ຄື

໑. ສັດທາ (ຄວາມເຊື່ອ)
໔. ຣຸຈິ (ຄວາມພໍໃຈ)
໓. ອະນຸດສະວະ (ການຟັງສືບຕໍ່ກັນມາ)
໔. ອາການປະຣິວິຕັກ (ຄວາມນຶກຄິດຕາມອາການ)
໕. ທິດຖິນິດຊານຂັນຕິ (ຄວາມເຂົ້າກັນໄດ້ກັບທິດສະດີທີ່ຄິດໄວ້)

ນິຄັນຜູ້ມີອາຍຸທັງຫຼາຍ ທຳ ໕ ປະການນີ້ ມີຜົນ ໔ ຢ່າງໃນປັດຈຸບັນ

ບັນດາທຳທັງ ໕ ປະການນັ້ນ ນິຄັນຜູ້ມີອາຍຸທັງຫຼາຍມີຄວາມເຊື່ອ ມີຄວາມພໍໃຈ ມີການຟັງສືບຕໍ່ກັນມາ ມີຄວາມນຶກຕາມອາການ ມີຄວາມເຂົ້າກັນໄດ້ກັບທິດສະດີທີ່ຄິດໄວ້ ໃນສາດສະດາຜູ້ມີວາທະທີ່ເປັນສ່ວນອະດີດ ແນວໃດ?"

ພິກຂຸທັງຫຼາຍ ເຮົາມີວາທະແນວນີ້ ກໍບໍ່ພິຈາລະນາເຫັນການໂຕ້ຕອບວາທະອັນຖືກຕ້ອງທຳແມ່ນຈັກໜ້ອຍໜຶ່ງໃນນິຄັນທັງຫຼາຍ

ພິກຂຸທັງຫຼາຍ ອີກປະການໜຶ່ງ ເຮົາກ່າວກັບນິຄັນເຫຼົ່ານັ້ນແນວນີ້ ວ່າ

"ນິຄັນຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄືສະໄໝໃດ ທ່ານທັງຫຼາຍມີຄວາມພະຍາຍາມຢ່າງແຮງກ້າ ມີຄວາມພຽນຢ່າງແຮງກ້າ ສະໄໝນັ້ນ ທ່ານທັງຫຼາຍເພິ່ງສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ເຊິ່ງເກີດຈາກຄວາມພຽນພະຍາຍາມຢ່າງແຮງກ້າ ແຕ່ສະໄໝໃດ ທ່ານທັງຫຼາຍບໍ່ມີຄວາມພະຍາຍາມຢ່າງແຮງກ້າ ບໍ່ມີຄວາມພຽນຢ່າງແຮງກ້າ ສະໄໝນັ້ນ ທ່ານທັງຫຼາຍກໍບໍ່ເພິ່ງສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ເຊິ່ງເກີດຈາກຄວາມພຽນພະຍາຍາມຢ່າງແຮງກ້າ"

ນິຄັນເຫຼົ່ານັ້ນຮັບວ່າ "ທ່ານພຣະໂຄດົມ ສະໄໝໃດ ຂ້າພະເຈົ້າທັງຫຼາຍມີຄວາມພະຍາຍາມຢ່າງແຮງກ້າ ມີຄວາມພຽນຢ່າງແຮງກ້າ ສະໄໝນັ້ນ ຂ້າພະເຈົ້າທັງຫຼາຍກໍສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ເຊິ່ງເກີດຈາກຄວາມພຽນພະຍາຍາມຢ່າງແຮງກ້າ ແຕ່ສະໄໝໃດ ຂ້າພະເຈົ້າທັງຫຼາຍບໍ່ມີຄວາມພະຍາຍາມຢ່າງແຮງກ້າ ບໍ່ມີຄວາມພຽນຢ່າງແຮງກ້າ ສະໄໝນັ້ນ ຂ້າພະເຈົ້າທັງຫຼາຍກໍບໍ່ສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ເຊິ່ງເກີດຈາກຄວາມພຽນພະຍາຍາມຢ່າງແຮງກ້າ"

[໓] ເຮົາກ່າວດັ່ງນີ້ວ່າ "ນິຄົນຜູ້ມີອາຍຸທັງຫຼາຍ ໄດ້ຂ່າວວ່າ ສະໄໝໃດ ທ່ານທັງຫຼາຍມີຄວາມພະຍາຍາມຢ່າງແຮງກ້າ ມີຄວາມພຽນຢ່າງແຮງກ້າ ສະໄໝນັ້ນ ທ່ານທັງຫຼາຍເພິ່ງສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ເຊິ່ງເກີດຈາກຄວາມພຽນພະຍາຍາມຢ່າງແຮງກ້າ ແຕ່ສະໄໝໃດ ທ່ານທັງຫຼາຍບໍ່ມີຄວາມພະຍາຍາມຢ່າງແຮງກ້າ ບໍ່ມີຄວາມພຽນຢ່າງແຮງກ້າ ສະໄໝນັ້ນ ທ່ານທັງຫຼາຍກໍບໍ່ເພິ່ງສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ເຊິ່ງເກີດຈາກຄວາມພຽນພະຍາຍາມຢ່າງແຮງກ້າ ເມື່ອເປັນແນວນີ້ ນິຄົນຜູ້ມີອາຍຸທັງຫຼາຍຈຶ່ງບໍ່ຄວນພະຍາກອນວ່າ "ບຸຣຸດບຸກຄົນນີ້ສະເຫວີຍສຸກແດ່ ສະເຫວີຍທຸກແດ່ ສະເຫວີຍອະທຸກຂະມະສຸຂະແດ່ ທັງໝົດນັ້ນ ຍ້ອນເຫດແຫ່ງກໍາທີ່ເຮັດໄວ້ໃນຊາດກ່ອນ ຍ້ອນກໍາເກົ່າສິ້ນສຸດດ້ວຍຕະບະ ຍ້ອນບໍ່ເຮັດກໍາໃໝ່ ຈຶ່ງບໍ່ຕົກຢູ່ໃຕ້ອໍານາດ(ແຫ່ງກໍາ)ຕໍ່ໄປ ຍ້ອນບໍ່ເປັນໄປຕາມອໍານາດແຫ່ງກໍາຕໍ່ໄປ ກໍາຈຶ່ງໝົດໄປຍ້ອນກໍາໝົດໄປທຸກຈຶ່ງໝົດໄປຍ້ອນທຸກໝົດໄປເວທະນາຈຶ່ງໝົດໄປຍ້ອນເວທະນາໝົດໄປທຸກທັງປວງຈຶ່ງຈັກເປັນອັນສະຫຼາຍໄປ"

ນິຄົນຜູ້ມີອາຍຸທັງຫຼາຍ ຖ້າສະໄໝໃດ ທ່ານທັງຫຼາຍມີຄວາມພະຍາຍາມຢ່າງແຮງກ້າ ມີຄວາມພຽນຢ່າງແຮງກ້າ ສະໄໝນັ້ນ ທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ເຊິ່ງເກີດຈາກຄວາມພຽນພະຍາຍາມຢ່າງແຮງກ້າ ເພິ່ງຢຸດໄດ້ເອງ ແຕ່ສະໄໝໃດ ທ່ານທັງຫຼາຍບໍ່ມີຄວາມພະຍາຍາມຢ່າງແຮງກ້າ ບໍ່ມີຄວາມພຽນຢ່າງແຮງກ້າ ສະໄໝນັ້ນ ທຸກຂະເວທະນາ ກ້າ ເຜັດຮ້ອນ ເຊິ່ງເກີດຈາກຄວາມພຽນພະຍາຍາມຢ່າງແຮງກ້າ ເພິ່ງຢຸດໄດ້ເອງ ເມື່ອເປັນແນວນີ້ ນິຄົນຜູ້ມີອາຍຸທັງຫຼາຍຈຶ່ງຄວນພະຍາກອນວ່າ "ບຸຣຸດບຸກຄົນນີ້ສະເຫວີຍສຸກແດ່ ສະເຫວີຍທຸກແດ່ ສະເຫວີຍອະທຸກຂະມະສຸຂະແດ່ ທັງໝົດນັ້ນ ຍ້ອນເຫດແຫ່ງກໍາທີ່ເຮັດໄວ້ໃນຊາດກ່ອນ ຍ້ອນກໍາເກົ່າສິ້ນສຸດດ້ວຍຕະບະ ຍ້ອນບໍ່ເຮັດກໍາໃໝ່ ຈຶ່ງບໍ່ຕົກຢູ່ໃຕ້ອໍານາດ(ແຫ່ງກໍາ)ຕໍ່ໄປ ຍ້ອນບໍ່ເປັນໄປຕາມອໍານາດແຫ່ງກໍາຕໍ່ໄປ ກໍາຈຶ່ງໝົດໄປຍ້ອນກໍາໝົດໄປທຸກຈຶ່ງໝົດໄປຍ້ອນທຸກໝົດໄປເວທະນາຈຶ່ງໝົດໄປຍ້ອນເວທະນາໝົດໄປ ທຸກທັງປວງຈຶ່ງຈັກເປັນອັນສະຫຼາຍໄປ"

ນິຄົນຜູ້ມີອາຍຸທັງຫຼາຍ ແຕ່ຍ້ອນເຫດທີ່ສະໄໝໃດ ທ່ານທັງຫຼາຍມີຄວາມພະຍາຍາມຢ່າງແຮງກ້າ ມີຄວາມພຽນຢ່າງແຮງກ້າ ສະໄໝນັ້ນ ທ່ານທັງຫຼາຍເພິ່ງສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ເຊິ່ງເກີດຈາກຄວາມພຽນພະຍາຍາມຢ່າງແຮງກ້າ ແຕ່ສະໄໝໃດ ທ່ານທັງຫຼາຍບໍ່ມີຄວາມພະຍາຍາມຢ່າງແຮງກ້າ ບໍ່ມີຄວາມພຽນຢ່າງແຮງກ້າ

ສະໄໝນັ້ນ ທ່ານທັງຫຼາຍກໍບໍ່ເພິ່ງສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ເຊິ່ງເກີດຈາກຄວາມພຽນພະຍາຍາມຢ່າງແຮງກ້າ ທ່ານທັງຫຼາຍເມື່ອສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ເຊິ່ງເກີດຈາກຄວາມພຽນພະຍາຍາມຢ່າງແຮງກ້າ ຍ່ອມເຊື່ອຜິດໄປ ຍ້ອນບໍ່ຮູ້ແຈ້ງ ຍ້ອນບໍ່ຮູ້ຈິງ ຍ້ອນຄວາມງົມງວາຍວ່າ "ບຸຣຸດບຸກຄົນນີ້ສະເຫວີຍສຸກແດ່ ສະເຫວີຍທຸກແດ່

ສະເຫວີຍອະທຸກຂະມະສຸຂະແດ່ ທັງໝົດນັ້ນ ຍ້ອນເຫດແຫ່ງກຳທີ່ເຮັດໄວ້ໃນຊາດກ່ອນ ຍ້ອນກຳເກົ່າສິ້ນສຸດດ້ວຍຕະບະ ຍ້ອນບໍ່ເຮັດກຳໃໝ່ ຈຶ່ງບໍ່ຕົກຢູ່ໃຕ້ອຳນາດ(ແຫ່ງກຳ)ຕໍ່ໄປ ຍ້ອນບໍ່ເປັນໄປຕາມອຳນາດແຫ່ງກຳຕໍ່ໄປ ກຳຈຶ່ງໝົດໄປຍ້ອນກຳໝົດໄປທຸກຈຶ່ງໝົດໄປ ຍ້ອນທຸກໝົດໄປເວທະນາຈຶ່ງໝົດໄປ ຍ້ອນເວທະນາໝົດໄປ ທຸກທັງປວງຈຶ່ງຈັກເປັນອັນສະຫຼາຍໄປ"

ພິກຂຸທັງຫຼາຍ ເຮົາແມ່ນມີວາທະແນວນີ້ ກໍບໍ່ພິຈາລະນາເຫັນການໂຕ້ຕອບວາທະອັນຖືກຕ້ອງທຳແມ່ນຈັກໜ້ອຍໃນນີຄົນທັງຫຼາຍ

[ກ] ພິກຂຸທັງຫຼາຍ ອີກປະການໜຶ່ງ ເຮົາຖາມນີຄົນເຫຼົ່ານັ້ນແນວນີ້ວ່າ "ນີຄົນຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ກຳໃດ ໃຫ້ຜົນໃນຊາດນີ້ ກຳນັ້ນທ່ານທັງຫຼາຍເພິ່ງປ່ຽນໄດ້ບໍ?ວ່າ "ຈົ່ງໃຫ້ຜົນໃນຊາດໜ້າ" ດ້ວຍຄວາມພະຍາຍາມ ຫຼື ດ້ວຍຄວາມພຽນນີ້"

ນີຄົນເຫຼົ່ານັ້ນຕອບວ່າ "ບໍ່ໄດ້ ທ່ານຜູ້ມີອາຍຸ"

"ກຳໃດຈະໃຫ້ຜົນໃນຊາດໜ້າ ກຳນັ້ນທ່ານທັງຫຼາຍເພິ່ງປ່ຽນໄດ້ບໍ?ວ່າ "ຈົ່ງໃຫ້ຜົນໃນຊາດນີ້" ດ້ວຍຄວາມພະຍາຍາມ ຫຼື ດ້ວຍຄວາມພຽນນີ້"

"ບໍ່ໄດ້ ທ່ານຜູ້ມີອາຍຸ"

"ນີຄົນຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ກຳໃດໃຫ້ຜົນເປັນສຸກ ກຳນັ້ນທ່ານທັງຫຼາຍເພິ່ງປ່ຽນໄດ້ບໍ?ວ່າ "ຈົ່ງໃຫ້ຜົນເປັນທຸກ" ດ້ວຍຄວາມພະຍາຍາມ ຫຼື ດ້ວຍຄວາມພຽນນີ້"

"ບໍ່ໄດ້ ທ່ານຜູ້ມີອາຍຸ"

"ກຳໃດໃຫ້ຜົນເປັນທຸກ ກຳນັ້ນທ່ານທັງຫຼາຍເພິ່ງປ່ຽນໄດ້ບໍ?ວ່າ "ຈົ່ງໃຫ້ຜົນເປັນສຸກ" ດ້ວຍຄວາມພະຍາຍາມ ຫຼື ດ້ວຍຄວາມພຽນນີ້"

"ບໍ່ໄດ້ ທ່ານຜູ້ມີອາຍຸ"

"ນີຄົນຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ກຳໃດໃຫ້ຜົນສິ້ນສຸດແລ້ວ ກຳນັ້ນທ່ານທັງຫຼາຍເພິ່ງປ່ຽນໄດ້ບໍ?ວ່າ "ຈົ່ງຢ່າໃຫ້ຜົນສິ້ນສຸດ" ດ້ວຍຄວາມພະຍາຍາມ ຫຼື ດ້ວຍຄວາມພຽນນີ້"

"ບໍ່ໄດ້ ທ່ານຜູ້ມີອາຍຸ"

"ກຳໃດໃຫ້ຜົນຍັງບໍ່ສິ້ນສຸດ ກຳນັ້ນທ່ານທັງຫຼາຍເພິ່ງປ່ຽນໄດ້ບໍວ່າ "ຈົ່ງໃຫ້ຜົນສິ້ນສຸດ" ດ້ວຍຄວາມພະຍາຍາມ ຫຼື ດ້ວຍຄວາມພຽນນີ້"

"ບໍ່ໄດ້ ທ່ານຜູ້ມີອາຍຸ"

"ນິຄັນຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ກຳໃດໃຫ້ຜົນຫຼາຍ ກຳນັ້ນທ່ານທັງຫຼາຍເພິ່ງປ່ຽນໄດ້ບໍວ່າ "ຈົ່ງໃຫ້ຜົນໜ້ອຍ" ດ້ວຍຄວາມພະຍາຍາມ ຫຼື ດ້ວຍຄວາມພຽນນີ້"

"ບໍ່ໄດ້ ທ່ານຜູ້ມີອາຍຸ"

"ກຳໃດໃຫ້ຜົນໜ້ອຍ ກຳນັ້ນທ່ານທັງຫຼາຍເພິ່ງປ່ຽນໄດ້ບໍວ່າ "ຈົ່ງໃຫ້ຜົນຫຼາຍ" ດ້ວຍຄວາມພະຍາຍາມ ຫຼື ດ້ວຍຄວາມພຽນນີ້"

"ບໍ່ໄດ້ ທ່ານຜູ້ມີອາຍຸ"

"ນິຄັນຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ກຳໃດໃຫ້ຜົນ ກຳນັ້ນທ່ານທັງຫຼາຍເພິ່ງປ່ຽນໄດ້ບໍວ່າ "ຈົ່ງຢ່າໃຫ້ຜົນ" ດ້ວຍຄວາມພະຍາຍາມ ຫຼື ດ້ວຍຄວາມພຽນນີ້"

"ບໍ່ໄດ້ ທ່ານຜູ້ມີອາຍຸ"

"ກຳໃດບໍ່ໃຫ້ຜົນ ກຳນັ້ນທ່ານທັງຫຼາຍເພິ່ງປ່ຽນໄດ້ບໍວ່າ "ຈົ່ງໃຫ້ຜົນ" ດ້ວຍຄວາມພະຍາຍາມ ຫຼື ດ້ວຍຄວາມພຽນນີ້"

"ບໍ່ໄດ້ ທ່ານຜູ້ມີອາຍຸ"

## ຄວາມພະຍາຍາມທີ່ຂາດຜົນ ຄວາມພຽນທີ່ຂາດຜົນ ໑໐ ປະການ

[໘] ນິຄັນຜູ້ມີອາຍຸທັງຫຼາຍ ໄດ້ຂ່າວ ວ່າ

໑. ກຳໃດໃຫ້ຜົນໃນຊາດນີ້ ກຳນັ້ນທ່ານທັງຫຼາຍປ່ຽນບໍ່ໄດ້ວ່າ "ຈົ່ງໃຫ້ຜົນໃນຊາດໜ້າ" ດ້ວຍຄວາມພະຍາຍາມ ຫຼື ດ້ວຍຄວາມພຽນນີ້

໒. ກຳໃດຈະໃຫ້ຜົນໃນຊາດໜ້າ ກຳນັ້ນທ່ານທັງຫຼາຍປ່ຽນບໍ່ໄດ້ວ່າ "ຈົ່ງໃຫ້ຜົນໃນຊາດນີ້" ດ້ວຍຄວາມພະຍາຍາມ ຫຼື ດ້ວຍຄວາມພຽນນີ້

໓. ກຳໃດໃຫ້ຜົນເປັນສຸກ ກຳນັ້ນທ່ານທັງຫຼາຍປ່ຽນບໍ່ໄດ້ວ່າ "ຈົ່ງໃຫ້ຜົນເປັນທຸກ" ດ້ວຍຄວາມພະຍາຍາມ ຫຼື ດ້ວຍຄວາມພຽນນີ້

໔. ກຳໃດໃຫ້ຜົນເປັນທຸກ ກຳນັ້ນທ່ານທັງຫຼາຍປ່ຽນບໍ່ໄດ້ວ່າ "ຈົ່ງໃຫ້ຜົນເປັນສຸກ" ດ້ວຍຄວາມພະຍາຍາມ ຫຼື ດ້ວຍຄວາມພຽນນີ້
໕. ກຳໃດໃຫ້ຜົນສິ້ນສຸດແລ້ວ ກຳນັ້ນທ່ານທັງຫຼາຍປ່ຽນບໍ່ໄດ້ວ່າ "ຈົ່ງຢ່າໃຫ້ຜົນສິ້ນສຸດ" ດ້ວຍຄວາມພະຍາຍາມ ຫຼື ດ້ວຍຄວາມພຽນນີ້
໖. ກຳໃດໃຫ້ຜົນຍັງບໍ່ສິ້ນສຸດ ກຳນັ້ນທ່ານທັງຫຼາຍປ່ຽນບໍ່ໄດ້ວ່າ "ຈົ່ງໃຫ້ຜົນສິ້ນສຸດ" ດ້ວຍຄວາມພະຍາຍາມ ຫຼື ດ້ວຍຄວາມພຽນນີ້
໗. ກຳໃດໃຫ້ຜົນຫຼາຍ ກຳນັ້ນ ທ່ານທັງຫຼາຍປ່ຽນບໍ່ໄດ້ວ່າ "ຈົ່ງໃຫ້ຜົນໜ້ອຍ" ດ້ວຍຄວາມພະຍາຍາມ ຫຼື ດ້ວຍຄວາມພຽນນີ້
໘. ກຳໃດໃຫ້ຜົນໜ້ອຍ ກຳນັ້ນທ່ານທັງຫຼາຍປ່ຽນບໍ່ໄດ້ວ່າ "ຈົ່ງໃຫ້ຜົນຫຼາຍ" ດ້ວຍຄວາມພະຍາຍາມ ຫຼື ດ້ວຍຄວາມພຽນນີ້
໙. ກຳໃດໃຫ້ຜົນ ກຳນັ້ນທ່ານທັງຫຼາຍປ່ຽນບໍ່ໄດ້ວ່າ "ຈົ່ງຢ່າໃຫ້ຜົນ" ດ້ວຍຄວາມພະຍາ ຍາມ ຫຼື ດ້ວຍຄວາມພຽນນີ້
໑໐. ກຳໃດບໍ່ໃຫ້ຜົນ ກຳນັ້ນທ່ານທັງຫຼາຍປ່ຽນບໍ່ໄດ້ວ່າ "ຈົ່ງໃຫ້ຜົນ" ດ້ວຍຄວາມພະຍາ ຍາມ ຫຼືດ້ວຍຄວາມພຽນນີ້

ເມື່ອເປັນແນວນີ້ ຄວາມພະຍາຍາມ ຄວາມພຽນຂອງນິຄົນຜູ້ມີອາຍຸທັງຫຼາຍຈຶ່ງຂາດຜົນ

ພິກຂຸທັງຫຼາຍ ນິຄົນທັງຫຼາຍເປັນຜູ້ມີວາທະແນວນີ້ ຄຳກ່າວດັ່ງນັ້ນແລະຄຳທີ່ກ່າວຕໍ່ ໆ ກັນມາ ໑໐ ປະການ ຂອງນິຄົນທັງຫຼາຍຜູ້ມີວາທະແນວນີ້ ຈະເປັນເຫດໃຫ້ຖືກຕຳໜິໄດ້

[໙] ພິກຂຸທັງຫຼາຍ ຄື

໑. ຖ້າໝູ່ສັດສະເຫວີຍສຸກແລະທຸກ ຍ້ອນເຫດແຫ່ງກຳທີ່ເຮັດໄວ້ໃນຊາດກ່ອນ ນິຄົນທັງຫຼາຍ ເພິ່ງເປັນຜູ້ເຮັດບາບກຳໄວ້ໃນຊາດກ່ອນແທ້ ໆ ຈຶ່ງເປັນເຫດໃຫ້ພວກເຂົາສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນປານນີ້ໃນບັດນີ້
໒. ຖ້າໝູ່ສັດສະເຫວີຍສຸກແລະທຸກ ຍ້ອນເຫດແຫ່ງການເນຣະມິດຂອງພຣະອິສວນ ນິຄົນທັງຫຼາຍ ເພິ່ງເປັນຜູ້ຖືກພຣະອິສວນຊັ້ນຕ່ຳເນຣະມິດມາແທ້ ໆ ຈຶ່ງເປັນເຫດໃຫ້ພວກເຂົາສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນປານນີ້ໃນບັດນີ້
໓. ຖ້າໝູ່ສັດສະເຫວີຍສຸກແລະທຸກ ຍ້ອນເຫດແຫ່ງເຄາະ ນິຄົນທັງຫຼາຍ ເພິ່ງເປັນຜູ້ມີເຄາະຮ້າຍແທ້ ໆ ຈຶ່ງເປັນເຫດໃຫ້ພວກເຂົາສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນປານນີ້ໃນບັດນີ້
໔. ຖ້າໝູ່ສັດສະເຫວີຍສຸກແລະທຸກ ຍ້ອນເຫດແຫ່ງອະພິຊາດ ນິຄົນທັງຫຼາຍ ເພິ່ງ

ເປັນຜູ້ມີອະພິຊາດຊົ່ວແທ້ ໆ ຈຶ່ງເປັນເຫດໃຫ້ພວກເຂົາສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນປານນີ້ໃນບັດນີ້

໕. ຖ້າໝູ່ສັດສະເຫວີຍສຸກແລະທຸກ ຍ້ອນເຫດແຫ່ງຄວາມພະຍາຍາມໃນປັດຈຸບັນ ນີຄົນທັງຫຼາຍ ເພິ່ງເປັນຜູ້ມີຄວາມພະຍາຍາມຊົ່ວຊາມໃນປັດຈຸບັນແທ້ ໆ ຈຶ່ງເປັນເຫດໃຫ້ພວກເຂົາສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນປານນີ້ໃນບັດນີ້

໖. ຖ້າໝູ່ສັດສະເຫວີຍສຸກແລະທຸກ ຍ້ອນເຫດແຫ່ງກຳທີ່ເຮັດໄວ້ໃນຊາດກ່ອນ ນີຄົນທັງຫຼາຍເພິ່ງເປັນຜູ້ຄວນຖືກຕຳໜິ ຖ້າໝູ່ສັດບໍ່ໄດ້ສະເຫວີຍສຸກ ແລະທຸກຍ້ອນເຫດແຫ່ງກຳທີ່ເຮັດໄວ້ໃນຊາດກ່ອນ ນີຄົນທັງຫຼາຍກໍເປັນຜູ້ຄວນຖືກຕຳໜິ

໗. ຖ້າໝູ່ສັດສະເຫວີຍສຸກແລະທຸກ ຍ້ອນເຫດແຫ່ງການເນຣະມິດຂອງພຣະອິສວນ ນີຄົນທັງຫຼາຍເພິ່ງເປັນຜູ້ຄວນຖືກຕຳໜິ ຖ້າໝູ່ສັດບໍ່ໄດ້ສະເຫວີຍສຸກແລະທຸກ ຍ້ອນເຫດແຫ່ງການເນຣະມິດຂອງພຣະອິສວນ ນີຄົນທັງຫຼາຍກໍເປັນຜູ້ຄວນຖືກຕຳໜິ

໘. ຖ້າໝູ່ສັດສະເຫວີຍສຸກແລະທຸກຍ້ອນເຫດແຫ່ງເຄາະ ນີຄົນທັງຫຼາຍ ເພິ່ງເປັນຜູ້ຄວນຖືກຕຳໜິ ຖ້າໝູ່ສັດບໍ່ໄດ້ສະເຫວີຍສຸກແລະທຸກ ຍ້ອນເຫດແຫ່ງເຄາະ ນີຄົນທັງຫຼາຍກໍເປັນຜູ້ຄວນຖືກຕຳໜິ

໙. ຖ້າໝູ່ສັດສະເຫວີຍສຸກແລະທຸກຍ້ອນເຫດແຫ່ງອະພິຊາດ ນີຄົນທັງຫຼາຍ ເພິ່ງເປັນຜູ້ຄວນຖືກຕຳໜິ ຖ້າໝູ່ສັດບໍ່ໄດ້ສະເຫວີຍສຸກແລະທຸກ ຍ້ອນເຫດແຫ່ງອະພິຊາດ ນີຄົນທັງຫຼາຍກໍເປັນຜູ້ຄວນຖືກຕຳໜິ

໑໐. ຖ້າໝູ່ສັດສະເຫວີຍສຸກແລະທຸກ ຍ້ອນເຫດແຫ່ງຄວາມພະຍາຍາມໃນປັດຈຸບັນ ນີຄົນທັງຫຼາຍເພິ່ງເປັນຜູ້ຄວນຖືກຕຳໜິ ຖ້າໝູ່ສັດບໍ່ໄດ້ສະເຫວີຍສຸກ ແລະທຸກຍ້ອນເຫດແຫ່ງຄວາມພະຍາຍາມໃນປັດຈຸບັນ ນີຄົນທັງຫຼາຍກໍເປັນຜູ້ຄວນຖືກຕຳໜິ

ນີຄົນທັງຫຼາຍເປັນຜູ້ມີວາທະແນວນີ້ ຄຳກ່າວດັ່ງນັ້ນ ແລະ ຄຳທີ່ກ່າວຕໍ່ ໆ ກັນມາ ໑໐ ປະການ ຂອງນີຄົນທັງຫຼາຍຜູ້ມີວາທະແນວນີ້ ຈຶ່ງເປັນເຫດໃຫ້ຖືກຕຳໜິໄດ້

ພິກຂຸທັງຫຼາຍ ຄວາມພະຍາຍາມທີ່ຂາດຜົນ ຄວາມພຽນທີ່ຂາດຜົນ ເປັນແນວນີ້ແລ

[໑໐] ຄວາມພະຍາຍາມທີ່ມີຜົນ ຄວາມພຽນທີ່ມີຜົນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ບໍ່ນຳຕົນເຊິ່ງບໍ່ມີທຸກເຂົ້າໄປຮັບທຸກ ບໍ່ສະລະສຸກທີ່ເກີດຂຶ້ນໂດຍທຳ

ບໍ່ເປັນຜູ້ໝົກມຸ້ນໃນສຸກນັ້ນ ຮູ້ແຈ້ງແນວນີ້ວ່າ "ເຮົານີ້ມີທຸກເປັນເຫດ ເລີ່ມພ່ຳເພັງຄວາມພຽນຢູ່ ຈຶ່ງຄາຍຄວາມກຳໜັດໄດ້ ຍ້ອນການພ່ຳເພັງຄວາມພຽນ ອັນໜຶ່ງ ເຮົານີ້ມີທຸກເປັນເຫດ ມີອຸເປກາ ຂາ ຈະເລີນອຸເປກຂາຢູ່ ຈຶ່ງຄາຍຄວາມກຳໜັດໄດ້"

ພິກຂຸນັ້ນ ເລີ່ມພ່ຳເພັງຄວາມພຽນ ແນວທີ່ພິກຂຸຜູ້ມີທຸກເປັນເຫດ ຜູ້ເລີ່ມພ່ຳເພັງຄວາມ ພຽນຢູ່ ຈຶ່ງຄາຍຄວາມກຳໜັດໄດ້ຍ້ອນການພ່ຳເພັງຄວາມພຽນ ພິກຂຸນັ້ນຈະເລີນອຸເປກຂາແນວທີ່ ພິກຂຸຜູ້ມີທຸກເປັນເຫດ ມີອຸເປກຂາ ຈະເລີນອຸເປກຂາຢູ່ ຈຶ່ງຄາຍຄວາມກຳໜັດໄດ້

ພິກຂຸຜູ້ມີທຸກເປັນເຫດນັ້ນ ເລີ່ມພ່ຳເພັງຄວາມພຽນຢູ່ ຈຶ່ງຄາຍຄວາມກຳໜັດໄດ້ ຍ້ອນ ການພ່ຳເພັງຄວາມພຽນ ທຸກນັ້ນຂອງພິກຂຸນັ້ນ ຍ່ອມເປັນອັນສະຫຼາຍຫາຍໄປ ແມ່ນດ້ວຍອາ ການແນວນີ້

ພິກຂຸຜູ້ມີທຸກເປັນເຫດນັ້ນ ມີອຸເປກຂາ ຈະເລີນອຸເປກຂາຢູ່ ຈຶ່ງຄາຍຄວາມກຳໜັດໄດ້ ທຸກນັ້ນຂອງພິກຂຸນັ້ນ ຍ່ອມເປັນອັນສະຫຼາຍຫາຍໄປ ແມ່ນດ້ວຍອາການແນວນີ້"

[໑໑] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸທັງຫຼາຍ ປຽບຄື ຊາຍຜູ້ຫຼົງຮັກ ມີຈິດຜູກ ພັນ ມີຄວາມຮັກອັນຮ້ອນແຮງ ມີໃຈຈົດຈໍ່ໃນຍິງຜູ້ໜຶ່ງ ເມື່ອເຂົາເຫັນຍິງນັ້ນ ຢືນໂອ້ລົມ ອອດ ອ້ອນ ສໍເລາະ ກຽວພັນ ຢູ່ກັບຊາຍອື່ນ

ທ່ານທັງຫຼາຍ ເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ?

ຄື ໂສກະ (ຄວາມໂສກເສົ້າ) ປະຣິເທວະ (ຄວາມໄຫ້ຈົ່ມ) ທຸກ (ຄວາມທຸກກາຍ) ໂທມະ ນັດ (ຄວາມທຸກໃຈ) ແລະອຸປາຍາດ (ຄວາມຄັບແຄ້ນໃຈ) ເພິ່ງເກີດຂຶ້ນແກ່ຊາຍນັ້ນ ຍ້ອນເຫັນ ຍິງຄົນນັ້ນຢືນໂອ້ລົມ ອອດອ້ອນ ສໍເລາະ ກຽວພັນ ຢູ່ກັບຊາຍອື່ນແດ່ບໍ?"

ພິກຂຸເຫຼົ່ານັ້ນ ທູນຕອບວ່າ "ເພິ່ງເກີດຂຶ້ນໄດ້ ຂ້ານ້ອຍ"

"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນຊາຍຄົນນັ້ນຫຼົງຮັກ ມີຈິດຜູກພັນ ມີຄວາມຮັກອັນຮ້ອນແຮງ ມີໃຈຈົດຈໍ່ໃນຍິງຄົນ ນັ້ນ ສະນັ້ນ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ຈຶ່ງເກີດຂຶ້ນຍ້ອນເຫັນຍິງນັ້ນ ຢືນໂອ້ລົມ ອອດອ້ອນ ສໍເລາະ ກຽວພັນ ຢູ່ກັບຊາຍອື່ນ ຂ້ານ້ອຍ"

"ພິກຂຸ ທັງຫຼາຍ ຄັ້ງນັ້ນ ຊາຍນັ້ນ ຄິດແນວນີ້ວ່າ "ເຮົາຫຼົງຮັກ ມີຈິດຜູກພັນ ມີຄວາມຮັກ ຮ້ອນແຮງ ມີໃຈຈົດຈໍ່ໃນຍິງຄົນນັ້ນ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ຈຶ່ງ ເກີດຂຶ້ນແກ່ເຮົາ ຍ້ອນເຫັນຍິງນັ້ນ ຢືນໂອ້ລົມ ອອດອ້ອນ ສໍເລາະ ກຽວພັນ ຢູ່ກັບຊາຍອື່ນ ທາງ

ທີ່ດີ ເຮົາຄວນເຊົາຮັກຍິງທີ່ເຮົາຫຼົງຮັກນັ້ນສາ" ເຂົາຈຶ່ງເຊົາຮັກຍິງທີ່ເຄີຍຫຼົງຮັກນັ້ນສາ ສະໄໝຕໍ່ມາ ບຸຣຸດນັ້ນ ເຫັນຍິງນັ້ນ ຢືນຄຸຍອອດອ້ອນສໍເລາະຢູ່ກັບຊາຍອື່ນ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ເພິ່ງເກີດຂຶ້ນແກ່ຊາຍນັ້ນ ຍ້ອນເຫັນຍິງນັ້ນ ຢືນໂອ້ລົມ ອອດອ້ອນ ສໍເລາະ ກຽວພັນ ຢູ່ກັບຊາຍອື່ນແດ່ບໍ?"

"ບໍ່ເພິ່ງເກີດຂຶ້ນໄດ້ ຂ້ານ້ອຍ"
"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນຊາຍຄົນນັ້ນ ຄາຍຄວາມຮັກໃນຍິງຄົນນັ້ນໄດ້ແລ້ວ ສະນັ້ນ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ຈຶ່ງບໍ່ເກີດຂຶ້ນ ຍ້ອນເຫັນຍິງນັ້ນ ຢືນໂອ້ລົມ ອອດອ້ອນ ສໍເລາະ ກຽວພັນ ຢູ່ກັບຊາຍອື່ນ ຂ້ານ້ອຍ"

"ພິກຂຸທັງຫຼາຍ ພິກຂຸກໍຄືກັນສັນນັ້ນ ບໍ່ນຳຕົນເຊິ່ງບໍ່ມີທຸກເຂົ້າໄປຮັບທຸກ ບໍ່ສະລະສຸກທີ່ເກີດຂຶ້ນໂດຍທຳ ແຕ່ກໍບໍ່ເປັນຜູ້ໝົກມຸ້ນໃນສຸກນັ້ນ ຮູ້ແຈ້ງແນວນີ້ວ່າ "ເຮົານີ້ມີທຸກເປັນເຫດ ເລີ່ມພ່ຳເພັງຄວາມພຽນຢູ່ ຈຶ່ງຄາຍຄວາມກຳໜັດໄດ້ ຍ້ອນການພ່ຳເພັງຄວາມພຽນ ອັນໜຶ່ງ ເຮົານີ້ມີທຸກເປັນເຫດ ມີອຸເປກຂາ ຈະເລີນອຸເປກຂາຢູ່ ຈຶ່ງຄາຍຄວາມກຳໜັດໄດ້"

ພິກຂຸນັ້ນ ຈຶ່ງເລີ່ມພ່ຳເພັງຄວາມພຽນ ແນວທີ່ພິກຂຸຜູ້ມີທຸກເປັນເຫດ ຜູ້ເລີ່ມພ່ຳເພັງຄວາມພຽນຢູ່ ຈຶ່ງຄາຍຄວາມກຳໜັດໄດ້ຍ້ອນການພ່ຳເພັງຄວາມພຽນ ພິກຂຸນັ້ນ ຈະເລີນອຸເປກຂາແນວທີ່ພິກຂຸຜູ້ມີທຸກເປັນເຫດ ມີອຸເປກຂາ ຈະເລີນອຸເປກຂາຢູ່ ຈຶ່ງຄາຍຄວາມກຳໜັດໄດ້

ພິກຂຸຜູ້ມີທຸກເປັນເຫດນັ້ນ ເລີ່ມພ່ຳເພັງຄວາມພຽນຢູ່ ຈຶ່ງຄາຍຄວາມກຳໜັດໄດ້ຍ້ອນການພ່ຳເພັງຄວາມພຽນ ທຸກນັ້ນຂອງພິກຂຸນັ້ນຍ່ອມເປັນອັນສະຫຼາຍໄປ ແມ່ນດ້ວຍອາການແນວນີ້

ພິກຂຸ ຜູ້ມີທຸກເປັນເຫດ ມີອຸເປກຂາ ຈະເລີນອຸເປກຂາຢູ່ ຈຶ່ງຄາຍຄວາມກຳໜັດໄດ້ ທຸກນັ້ນຂອງພິກຂຸນັ້ນຍ່ອມເປັນອັນສະຫຼາຍໄປ ແມ່ນດ້ວຍອາການແນວນີ້

ພິກຂຸທັງຫຼາຍ ຄວາມພະຍາຍາມທີ່ມີຜົນ ຄວາມພຽນທີ່ມີຜົນ ເປັນແນວນີ້

[໑໘] ພິກຂຸທັງຫຼາຍ ອີກປະການໜຶ່ງ ພິກຂຸພິຈາລະນາເຫັນດັ່ງນີ້ວ່າ "ເມື່ອເຮົາຢູ່ຕາມສະບາຍ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ແຕ່ເມື່ອເຮົາເລີ່ມຕັ້ງຕົນໄວ້ໃນຄວາມລຳບາກ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ທາງທີ່ດີ ເຮົາຄວນເລີ່ມຕັ້ງຕົນໄວ້ໃນຄວາມລຳບາກ" ພິກຂຸນັ້ນ ຈຶ່ງເລີ່ມຕັ້ງຕົນໄວ້ໃນຄວາມລຳບາກ ເມື່ອພິກຂຸນັ້ນ ເລີ່ມຕັ້ງຕົນໄວ້ໃນຄວາມລຳບາກ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ສະໄໝຕໍ່ມາ ພິກຂຸນັ້ນ ຈຶ່ງບໍ່ຕ້ອງເລີ່ມຕັ້ງຕົນໄວ້ໃນຄວາມລຳບາກ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນພິກຂຸນັ້ນ ເລີ່ມຕັ້ງຕົນໄວ້ໃນຄວາມລຳບາກເພື່ອປະໂຫຍດໃດ ປະໂຫຍດນັ້ນຂອງທ່ານສຳເລັດແລ້ວ ເຫດນັ້ນ ສະໄໝຕໍ່ມາ ພິກຂຸນັ້ນ ຈຶ່ງບໍ່ຕ້ອງເລີ່ມຕັ້ງຕົນໄວ້ໃນຄວາມລຳບາກ

ພິກຂຸທັງຫຼາຍ ຊ່າງສອນລົນລູກສອນກັບໄປກັບມາເທິງຂ່າໄຟ ໔ ອັນ ດັດໃຫ້ກົງຈົນໃຊ້ການໄດ້ ຍ້ອນເຫດທີ່ລູກສອນອັນຊ່າງສອນກັບໄປກັບມາເທິງຂ່າໄຟ ໔ ອັນ ດັດໃຫ້ກົງຈົນໃຊ້ການໄດ້ແລ້ວ ສະໄໝຕໍ່ມາ ຊ່າງສອນນັ້ນ ຈຶ່ງບໍ່ລົນລູກສອນນັ້ນ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຊ່າງສອນນັ້ນ ເພິ່ງລົນລູກສອນກັບໄປກັບມາເທິງຂ່າໄຟ ໔ ອັນ ດັດໃຫ້ກົງຈົນໃຊ້ການໄດ້ ເພື່ອປະໂຫຍດໃດ ປະໂຫຍດນັ້ນຂອງເຂົາສຳເລັດແລ້ວ ເຫດນັ້ນ ສະໄໝຕໍ່ມາ ຊ່າງສອນນັ້ນ ຈຶ່ງບໍ່ລົນລູກສອນກັບໄປກັບມາເທິງຂ່າໄຟ ໔ ອັນ ບໍ່ຕ້ອງດັດໃຫ້ກົງຈົນໃຊ້ການໄດ້ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຍ່ອມພິຈາລະນາເຫັນດັ່ງນີ້ວ່າ “ເມື່ອເຮົາຢູ່ຕາມສະບາຍ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ແຕ່ເມື່ອເຮົາເລີ່ມຕັ້ງຕົນໄວ້ໃນຄວາມລຳບາກ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ທາງທີ່ດີ ເຮົາຄວນເລີ່ມຕັ້ງຕົນໄວ້ໃນຄວາມລຳບາກ” ພິກຂຸນັ້ນຈຶ່ງເລີ່ມຕັ້ງຕົນໄວ້ໃນຄວາມລຳບາກ ເມື່ອພິກຂຸນັ້ນເລີ່ມຕັ້ງຕົນໄວ້ໃນຄວາມລຳບາກ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ເຫດນັ້ນ ສະໄໝຕໍ່ມາ ພິກຂຸນັ້ນຈຶ່ງບໍ່ຕ້ອງເລີ່ມຕັ້ງຕົນໄວ້ໃນຄວາມລຳບາກ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນພິກຂຸນັ້ນ ເລີ່ມຕັ້ງຕົນໄວ້ໃນຄວາມລຳບາກເພື່ອປະໂຫຍດໃດ ປະໂຫຍດນັ້ນຂອງທ່ານສຳເລັດແລ້ວ ເຫດນັ້ນ ສະໄໝຕໍ່ມາ ພິກຂຸນັ້ນຈຶ່ງບໍ່ຕ້ອງເລີ່ມຕັ້ງຕົນໄວ້ໃນຄວາມລຳບາກ

ພິກຂຸທັງຫຼາຍ ຄວາມພະຍາຍາມທີ່ມີຜົນ ຄວາມພຽນທີ່ມີຜົນ ເປັນແນວນີ້

[໑໙] ພິກຂຸທັງຫຼາຍ ອີກປະການໜຶ່ງ ຕະຖາຄົດອຸບັດຂຶ້ນມາໃນໂລກນີ້ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍຕົນເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ[໙] ຮູ້ແຈ້ງໂລກນີ້ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະ ໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດດ້ວຍຕົນເອງແລ້ວປະກາດໃຫ້ຜູ້ອື່ນຮູ້ຕາມ ສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ[໑] ປະກາດພົມມະຈັນພ້ອມທັງອັດຖະ ແລະ ພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນ

ຄະຫະບໍດີ ບຸດຄະຫະບໍດີ ຫຼືອະນຸຊົນ (ຄົນຜູ້ເກີດພາຍຫຼັງ) ໃນຕະກູນໃດຕະກູນໜຶ່ງ ໄດ້ສະດັບທຳນັ້ນ ເກີດສັດທາໃນຕະຖາຄົດ ເມື່ອມີສັດທາ ຍ່ອມຄິດວ່າ "ການຢູ່ຄອງເຮືອນເປັນເລື້ອງອຶດອັດ ເປັນທາງມາແຫ່ງທຸລີ ການບວດເປັນທາງປອດໂປ່ງ ການທີ່ຜູ້ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດ ບໍລິບູນ ຄົບຖ້ວນ ຄື ຫອຍສັງຂັດ ບໍ່ແມ່ນເຮັດໄດ້ງ່າຍ ທາງທີ່ດີ ເຮົາຄວນແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດເທີ້ນ" ຕໍ່ມາເຂົາລະຖິ້ມກອງໂພຄະສົມບັດນ້ອຍໃຫຍ່ ແລະ ເຄືອຍາດນ້ອຍໃຫຍ່ ແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ

## ສິກຂາແລະສາຊີບຂອງພິກຂຸ

[໑໔] ພິກຂຸນັ້ນບວດແລ້ວແບວນີ້ ເຖິງຄວາມເປັນຜູ້ມີສິກຂາ ແລະ ສາຊີບຂອງພິກຂຸທັງຫຼາຍ ຄື

໑. ລະເວັ້ນຂາດຈາກການຂ້າສັດ ຄື ວາງທັນດາວຸດ ແລະສັດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່

໒. ລະເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ຄື ຮັບເອົາ ແຕ່ສິ່ງຂອງທີ່ເຂົາໃຫ້ ມຸ້ງຫວັງແຕ່ສິ່ງຂອງທີ່ເຂົາໃຫ້ ບໍ່ເປັນຂີ້ລັກ ເປັນຄົນສະອາດຢູ່

໓. ລະພຶດຕິກຳອັນເປັນຂ້າເສິກຕໍ່ພົມມະຈັນ ຄື ປະພຶດພົມມະຈັນ ເວັ້ນຫ່າງໄກຈາກເມ ຖຸນທຳ໌ອັນເປັນກິດຂອງຊາວບ້ານ

໔. ລະເວັ້ນຂາດຈາກການເວົ້າຕົວະ ຄື ເວົ້າແຕ່ຄຳສັດ ດຳລົງຄວາມສັດ ມີຄຳເວົ້າເປັນຫຼັກ ເຊື່ອຖືໄດ້ ບໍ່ຫຼອກລວງຊາວໂລກ

໕. ລະເວັ້ນຂາດຈາກການເວົ້າສັບສໍ່ ຄື ຟັງຄວາມຈາກຝ່າຍນີ້ແລ້ວ ບໍ່ໄປບອກຝ່າຍນັ້ນ ເພື່ອທຳລາຍຝ່າຍນີ້ ຫຼືຟັງຄວາມຝ່າຍນັ້ນແລ້ວ ບໍ່ມາບອກຝ່າຍນີ້ເພື່ອທຳລາຍຝ່າຍນັ້ນ ສະໝານຄົນທີ່ແຕກກັນ ສົ່ງເສີມຄົນທີ່ປອງດອງກັນຊົມຊື່ນ ຍິນດີ ເພີດເພີນຕໍ່ຜູ້ທີ່ສາມັກຄີກັນ ເວົ້າແຕ່ຄຳເວົ້າທີ່ສ້າງສັນຄວາມສາມັກຄີ

໖. ລະເວັ້ນຂາດຈາກການເວົ້າຄຳຫຍາບ ຄື ເວົ້າແຕ່ຄຳບໍ່ມີໂທດ ມ່ວນ ໜ້າຮັກຈັບໃຈ ເປັນຄຳຂອງຊາວເມືອງ ຄົນສ່ວນຫຼາຍຮັກແພງ ພໍໃຈ

໗. ລະເວັ້ນຂາດຈາກການເວົ້າບໍ່ມີສາຣະ ຄື ເວົ້າຖືກເວລາ ເວົ້າຄຳຈິງ ເວົ້າອີງປະໂຫຍດ ເວົ້າອີງທຳ ເວົ້າອີງວິໄນ ເວົ້າຄຳທີ່ມີຫຼັກຖານ ມີບ່ອນອ້າງອີງ ມີບ່ອນກຳນົດ ປະກອບດ້ວຍປະໂຫຍດ ເໝາະແກ່ການເວລາ

໘. ເວັ້ນຂາດຈາກການພາກພີຊະຄາມ ແລະ ພູຕະຄາມ

៧. ສັນຄາບຽງ ບໍ່ສັນຕອນກາງຄືນ ເວັ້ນຂາດຈາກການສັນໃນເວລາວິການ

១០. ເວັ້ນຂາດຈາກການຟ້ອນລຳ ຂັບຮ້ອງ ເສບດົນຕີ ແລະ ເບິ່ງການລະຫຼິ້ນທີ່ເປັນຂ້າເສິກແກ່ກຸສົນ

១១. ເວັ້ນຂາດຈາກການທັດຊົງ ປະດັບ ຕົກແຕ່ງຮ່າງກາຍດ້ວຍພວງດອກໄມ້ຂອງຫອມແລະເຄື່ອງຕົກແຕ່ງຜິວ ອັນເປັນລັກສະນະແຫ່ງການແຕ່ງໂຕ

១២. ເວັ້ນຂາດຈາກບ່ອນນອນສູງໃຫຍ່

១៣. ເວັ້ນຂາດຈາກການຮັບ ຄຳແລະເງິນ

១៤. ເວັ້ນຂາດຈາກການຮັບ ທັນຍາຫານດິບ

១៥. ເວັ້ນຂາດຈາກການຮັບ ຊີ້ນດິບ

១៦. ເວັ້ນຂາດຈາກການຮັບ ສະຕີແລະກຸມາຣີ

១៧. ເວັ້ນຂາດຈາກການຮັບ ຂ້າທາດຍິງ ແລະ ຂ້າທາດຊາຍ

១៨. ເວັ້ນຂາດຈາກການຮັບ ແບ້ ແລະ ແກະ

១៩. ເວັ້ນຂາດຈາກການຮັບ ໄກ່ ແລະ ໝູ

២០. ເວັ້ນຂາດຈາກການຮັບ ຊ້າງ ງົວ ມ້າ ແລະ ລາ

២១. ເວັ້ນຂາດຈາກການຮັບຮົ້ວສວນໄຮ່ນາ ແລະ ທີ່ດິນ

២២. ເວັ້ນຂາດຈາກການເຮັດໜ້າທີ່ເປັນໂຕແທນ ແລະ ຜູ້ສື່ສານ

២៣. ເວັ້ນຂາດຈາກການຊື້ຂາຍ

២៤. ເວັ້ນຂາດຈາກການໂກງດ້ວຍຕາຊົງ ດ້ວຍຂອງປອມ ແລະດ້ວຍເຄື່ອງຕວງວັດ

២៥. ເວັ້ນຂາດຈາກການຮັບສິນບົນ ການລໍ້ລວງ ແລະ ການຫຼອກລວງ

២៦. ເວັ້ນຂາດຈາກການຕັດ (ອະໄວຍະວະ) ການຂ້າ ການຄຸມຂັງ ການແລ່ນຕີຍາດຊິງ ການປຸ້ນ ແລະ ການຂົ່ມຂູ່ເອົາຊັບ[១]

ພິກຂຸນັ້ນ ເປັນຜູ້ສັນໂດດດ້ວຍຈີວອນພໍຫຸ້ມຮ່າງກາຍ ແລະ ບິນທະບາດພໍອີ່ມທ້ອງ ຈະໄປບ່ອນໃດ ໆ ກໍໄປໄດ້ທັນທີ ເໝືອນນົກບິນໄປບ່ອນໃດ ໆ ກໍມີແຕ່ປີກເປັນພາລະ ທ່ານປະກອບດ້ວຍອະຣິຍະສີລະຂັນແນວນີ້ແລ້ວ ຍ່ອມສະເຫວີຍສຸກອັນປາສະຈາກໂທດໃນພາຍໃນ

[១៥] ພິກຂຸນັ້ນ ເຫັນຮູບທາງຕາແລ້ວ ບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳ ຄື ອະພິດຊາ ແລະໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ

ຟັງສຽງທາງຫູແລ້ວ ฯลฯ

ດົມກິ່ນທາງດັງແລ້ວ ฯลฯ

ຊີມຣົດທາງລີ້ນແລ້ວ ฯลฯ

ຖືກຕ້ອງໂຜດຖັບພະທາງກາຍແລ້ວ ฯลฯ

ຮູ້ແຈ້ງທຳມາຣົມທາງໃຈແລ້ວ ບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳ ຄື ອະພິດຊາແລະໂທມະນັດ ຄອບງຳໄດ້ ຈຶ່ງຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ທ່ານປະກອບດ້ວຍອະຣິຍະອິນ ຊີສັງວອນແນວນີ້ແລ້ວ ຍ່ອມສະເຫວີຍສຸກອັນບໍ່ຜະສົມດ້ວຍກິເລດໃນພາຍໃນ

ພິກຂຸນັ້ນ ທຳຄວາມຮູ້ສຶກໂຕໃນການກ້າວໄປ ການຖອຍກັບ ການແນມເບິ່ງ ການຫຼຽວ ເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດແລະຈີວອນ ການສັນ ການດື່ມ ການ ຫຍ້ຳ ການກິນ ການຖ່າຍອຸດຈາຣະ ປັດສາວະ ການຍ່າງ ການຢືນ ການນັ່ງ ການນອນ ການ ຕື່ນ ການເວົ້າ ການນິ່ງ

[໑໖] ພິກຂຸນັ້ນ ປະກອບດ້ວຍອະຣິຍະສີນະຂັນ ອະຣິຍະອິນຊີສັງວອນ ແລະອະຣິຍະສະ ຕິສຳປະຊັນຍະແລ້ວ ພັກຢູ່ ເສນາສະນະງຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູ ຊອກເຂົາ ຖ້ຳ ປ່າ ຊ້າ ປ່າຮົກ ກາງແຈ້ງ ກອງເຟືອງ ທ່ານກັບຈາກບິນທະບາດພາຍຫຼັງສັນອາຫານສຳເລັດ ແລ້ວ ນັ່ງຂັດສະມາທິ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ທ່ານລະອະພິດຊາ (ຄວາມເພ່ງເລັງ ຢາກໄດ້ສິ່ງຂອງຂອງເຂົາ) ໃນໂລກ ມີໃຈປາສະຈາກອະພິດຊາ ຊຳຣະຈິດໃຫ້ບໍລິສຸດຈາກອະພິດ ຊາ ລະຄວາມມຸ້ງຮ້າຍຄືພະຍາບາດ ມີຈິດບໍ່ພະຍາບາດ ມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ ຊຳຣະຈິດໃຫ້ບໍລິສຸດຈາກຄວາມມຸ້ງຮ້າຍ ຄື ພະຍາບາດ ລະຖີນະມິດທະ (ຄວາມຫົດຫູ່ແລະງ່ວມ ເຫງົາ) ມີຈິດປາສະຈາກຖີນະມິດທະ ກຳນົດແສງສະຫວ່າງ ມີສະຕິສຳປະຊັນຍະ ຊຳຣະຈິດໃຫ້ ບໍລິສຸດຈາກຖີນະມິດທະ ລະອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະລຳຄານໃຈ) ເປັນຜູ້ບໍ່ຟຸ້ງ ຊ່ານ ມີຈິດສະງົບພາຍໃນ ຊຳຣະຈິດໃຫ້ບໍລິສຸດຈາກອຸດທັດຈະກຸກກຸດຈະ ລະວິຈິກິດສາ (ຄວາມ ລັງເລສົງໄສ) ຂ້າມພົ້ນວິຈິກິດສາໄດ້ແລ້ວ ບໍ່ມີຄວາມສົງໄສໃນກຸສົນທຳທັງຫຼາຍຢູ່ ຊຳຣະຈິດໃຫ້ ບໍລິສຸດຈາກວິຈິກິດສາ ທ່ານລະນິວອນ ໕ ປະການນີ້ ທີ່ເຮັດໃຫ້ຈິດເສົ້າໝອງ ບັ່ນທອນກຳລັງ ປັນຍາ

## ປະຖົມຊານ

ພິກຂຸນັ້ນ ສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່

ພິກຂຸທັງຫຼາຍ ຄວາມພະຍາຍາມທີ່ມີຜົນ ຄວາມພຽນທີ່ມີຜົນ ເປັນແນວນີ້

## ທຸຕິຍະຊານ

ອີກປະການໜຶ່ງ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານມີຄວາມຜ່ອງ ໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິ ແລະ ສຸກອັນເກີດ ຈາກສະມາທິຢູ່

ພິກຂຸທັງຫຼາຍ ຄວາມພະຍາຍາມທີ່ມີຜົນ ຄວາມພຽນທີ່ມີຜົນ ເປັນແນວນີ້

## ຕະຕິຊານ

ອີກປະການໜຶ່ງ ຍ້ອນປີຕິຈາງຄາຍອອກ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ"

ພິກຂຸທັງຫຼາຍ ຄວາມພະຍາຍາມທີ່ມີຜົນ ຄວາມພຽນທີ່ມີຜົນ ເປັນແນວນີ້

## ຈະຕຸດຖະຊານ

ອີກປະການໜຶ່ງ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດ ແລະ ໂທມະນັດດັບໄປກ່ອນ ພິກຂຸບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່

ພິກຂຸທັງຫຼາຍ ຄວາມພະຍາຍາມທີ່ມີຜົນ ຄວາມພຽນທີ່ມີຜົນ ເປັນແນວນີ້

[໑໗] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ[໒] ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອປຸບເພນິວາສານຸດສະຕິຍານ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດວິວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດສັງວັດຕະກັບແລະວິວັດຕະກັບເປັນຈຳນວນຫຼາຍແດ່ ວ່າ "ໃນພົບນັ້ນ ເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນແລ້ວ ໄດ້ໄປເກີດໃນພົບນັ້ນແມ່ນໃນພົບນັ້ນ ເຮົາກໍມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນ ຈຶ່ງມາເກີດໃນພົບນີ້" ທ່ານຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດແນວນີ້

ພິກຂຸທັງຫຼາຍ ຄວາມພະຍາຍາມທີ່ມີຜົນ ຄວາມພຽນທີ່ມີຜົນ ເປັນແນວນີ້

[໑໘] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກ ຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ

"ໝູ່ສັດທີ່ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ພວກເຂົາຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ໔ ແຕ່ໝູ່ສັດທີ່ປະກອບກາຍສຸດຈະຣິດ ວະຈີສຸຈະຣິດ ແລະມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຖືກ ພວກເຂົາຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸຄະຕິໂລກສະຫວັນ" ທ່ານເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳແນວນີ້ແລ

ພິກຂຸທັງຫຼາຍ ຄວາມພະຍາຍາມທີ່ມີຜົນ ຄວາມພຽນທີ່ມີຜົນ ເປັນແນວນີ້

[໑໗] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອອາສະວັກຂະຍະຍານ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ນີ້ອາສະວະ[໑] ນີ້ອາສະວະສະມຸໄທ ນີ້ອາສະວະນິໂຣດ ນີ້ອາສະວະນິໂຣທະຄາມິນີປະຕິປະທາ" ເມື່ອທ່ານຮູ້ເຫັນຢູ່ແນວນີ້ ຈິດຍ່ອມລຸດພົ້ນຈາກກາມາສະວະ ພະວາສະວະ ແລະ ອະວິດຊາສະວະ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ "ລຸດພົ້ນແລ້ວ" ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ[໔] ເຮັດກິດທີ່ຄວນເຮັດສຳເລັດແລ້ວ[໓] ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ພິກຂຸທັງຫຼາຍ ຄວາມພະຍາຍາມທີ່ມີຜົນ ຄວາມພຽນທີ່ມີຜົນ ເປັນແນວນີ້

ພິກຂຸທັງຫຼາຍ ຕະຖາຄົດມີວາທະແນວນີ້ ຄຳກ່າວດັ່ງນັ້ນແລະຄຳທີ່ກ່າວຕໍ່ ໆ ກັນມາ ໑໐ ປະການ ຂອງຕະຖາຄົດຜູ້ມີວາທະແນວນີ້ ຈຶ່ງເປັນເຫດໃຫ້ໄດ້ຮັບການສັນເສີນ

[໔໐] ພິກຂຸທັງຫຼາຍ ຄື

໑. ຖ້າໝູ່ສັດສະເຫວີຍສຸກ ແລະ ທຸກຍ້ອນເຫດແຫ່ງກຳທີ່ເຮັດໄວ້ໃນຊາດກ່ອນ ຕະຖາຄົດເພິ່ງເປັນຜູ້ເຮັດກຳດີໄວ້ໃນຊາດກ່ອນແທ້ໆ ຈຶ່ງເປັນເຫດໃຫ້ຕະຖາຄົດສະເຫວີຍສຸກຂະເວທະນາອັນບໍ່ມີອາສະວະປານນີ້ໃນບັດນີ້

໔. ຖ້າໝູ່ສັດສະເຫວີຍສຸກ ແລະ ທຸກຍ້ອນເຫດແຫ່ງການເນຣະມິດຂອງພຣະອິສວນ ຕະຖາຄົດເພິ່ງເປັນຜູ້ຖືກພຣະອິສວນຊັ້ນສູງເນຣະມິດມາແທ້ໆ ຈຶ່ງເປັນເຫດໃຫ້ຕະຖາຄົດສະເຫວີຍສຸກຂະເວທະນາອັນບໍ່ມີອາສະວະປານນີ້ໃນບັດນີ້

໓. ຖ້າໝູ່ສັດສະເຫວີຍສຸກ ແລະ ທຸກຍ້ອນເຫດແຫ່ງເຄາະ ຕະຖາຄົດເພິ່ງເປັນຜູ້ມີເຄາະກຳດີແທ້ໆ ຈຶ່ງເປັນເຫດໃຫ້ຕະຖາຄົດສະເຫວີຍສຸກຂະເວທະນາອັນບໍ່ມີອາສະວະປານນີ້ໃນບັດນີ້

໔. ຖ້າໝູ່ສັດສະເຫວີຍສຸກ ແລະ ທຸກຍ້ອນເຫດແຫ່ງອະພິຊາດ ຕະຖາຄົດເພິ່ງເປັນຜູ້ມີອະພິຊາດດີແທ້ໆ ຈຶ່ງເປັນເຫດໃຫ້ຕະຖາຄົດສະເຫວີຍສຸກຂະເວທະນາອັນບໍ່ມີອາສະວະປານນີ້ໃນບັດນີ້

໕. ຖ້າໝູ່ສັດສະເຫວີຍສຸກ ແລະ ທຸກຍ້ອນເຫດແຫ່ງຄວາມພະຍາຍາມໃນປັດຈຸບັນ ຕະຖາຄົດເພິ່ງເປັນຜູ້ມີຄວາມພະຍາຍາມດີໃນປັດຈຸບັນແທ້ໆ ຈຶ່ງເປັນເຫດໃຫ້ຕະຖາຄົດສະເຫວີຍສຸກຂະເວທະນາອັນບໍ່ມີອາສະວະປານນີ້ໃນບັດນີ້

໖. ຖ້າໝູ່ສັດສະເຫວີຍສຸກ ແລະ ທຸກຍ້ອນເຫດແຫ່ງກຳທີ່ເຮັດໄວ້ໃນຊາດກ່ອນ ຕະຖາຄົດເພິ່ງເປັນຜູ້ໜ້າສັນເສີນ ຖ້າໝູ່ສັດບໍ່ໄດ້ສະເຫວີຍສຸກ ແລະ ທຸກຍ້ອນເຫດແຫ່ງກຳທີ່ເຮັດໄວ້ໃນຊາດກ່ອນ ຕະຖາຄົດກໍເປັນຜູ້ໜ້າສັນເສີນ

໗. ຖ້າໝູ່ສັດສະເຫວີຍສຸກ ແລະ ທຸກຍ້ອນເຫດແຫ່ງການເນຣະມິດຂອງພຣະອິສວນຕະຖາຄົດເພິ່ງເປັນຜູ້ໜ້າສັນເສີນ ຖ້າໝູ່ສັດບໍ່ໄດ້ສະເຫວີຍສຸກ ແລະ ທຸກຍ້ອນເຫດແຫ່ງການເນຣະມິດຂອງພຣະອິສວນ ຕະຖາຄົດກໍເປັນຜູ້ໜ້າສັນເສີນ

໘. ຖ້າໝູ່ສັດສະເຫວີຍສຸກ ແລະ ທຸກຍ້ອນເຫດແຫ່ງເຄາະ ຕະຖາຄົດເພິ່ງເປັນຜູ້ໜ້າສັນເສີນ ຖ້າໝູ່ສັດບໍ່ໄດ້ສະເຫວີຍສຸກ ແລະ ທຸກຍ້ອນເຫດແຫ່ງເຄາະ ຕະຖາຄົດກໍເປັນຜູ້ໜ້າສັນເສີນ

໙. ຖ້າໝູ່ສັດສະເຫວີຍສຸກ ແລະ ທຸກຍ້ອນເຫດແຫ່ງອະພິຊາດ ຕະຖາຄົດເພິ່ງເປັນຜູ້ໜ້າສັນເສີນ ຖ້າໝູ່ສັດບໍ່ໄດ້ສະເຫວີຍສຸກ ແລະ ທຸກຍ້ອນເຫດແຫ່ງອະພິຊາດ ຕະຖາຄົດກໍເປັນຜູ້ໜ້າສັນເສີນ

໑໐. ຖ້າໝູ່ສັດສະເຫວີຍສຸກ ແລະ ທຸກຍ້ອນເຫດແຫ່ງຄວາມພະຍາຍາມໃນປັດຈຸບັນ ຕະຖາຄົດເພິ່ງເປັນຜູ້ໜ້າສັນເສີນ ຖ້າໝູ່ສັດບໍ່ໄດ້ສະເຫວີຍສຸກແລະທຸກຍ້ອນ ເຫດແຫ່ງຄວາມພະ ຍາຍາມໃນປັດຈຸບັນ ຕະຖາຄົດກໍເປັນຜູ້ໜ້າສັນເສີນ[໑]

ພິກຂຸທັງຫຼາຍ ຕະຖາຄົດມີວາທະແນວນີ້ ຄຳກ່າວເຊັ່ນນັ້ນແລະຄຳທີ່ກ່າວຕໍ່ ໆ ກັນມາ ໑໐ ປະການ ຂອງຕະຖາຄົດຜູ້ມີວາທະແນວນີ້ ຈຶ່ງເປັນເຫດໃຫ້ໄດ້ຮັບການສັນເສີນ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ເທວະທະຫະສູດທີ ໑ ຈົບ**

# ໔. ປັນຈັດຕະຍະສູດ

## ວ່າດ້ວຍຄວາມເຫັນຜິດ ໕ ປະການ ໓ ໝວດ

## ວາທະກ່ຽວກັບຂັນສ່ວນອະນາຄົດ

[໔໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີຢູ່ບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

"ພິກຂຸທັງຫຼາຍ ມີສະມະນະພາມພວກໜຶ່ງກຳນົດຂັນ (ສັບພະສິງ) ສ່ວນອະນາຄົດມີຄວາມເຫັນ ຄວນຕາມຂັນສ່ວນອະນາຄົດ ຜາຣົບຂັນສ່ວນອະນາຄົດ ປະກາດວາທະສະແດງທິດຖິຕ່າງ ໆ ຄື

ສະມະນະພາມພວກໜຶ່ງປະກາດແນວນີ້ວ່າ "ອັດຕາທີ່ມີສັນຍາ ໝັ້ນຍືນຫຼັງຈາກຕາຍແລ້ວ"

ສະມະນະພາມພວກໜຶ່ງປະກາດແນວນີ້ວ່າ "ອັດຕາທີ່ບໍ່ມີສັນຍາ ໝັ້ນຍືນຫຼັງຈາກຕາຍແລ້ວ"

ສະມະນະພາມພວກໜຶ່ງປະກາດແນວນີ້ວ່າ "ອັດຕາ ທີ່ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນໝັ້ນຍືນຫຼັງຈາກຕາຍແລ້ວ"

ສະມະນະພາມພວກໜຶ່ງບັນຍັດຄວາມຂາດສູນ ຄວາມພິນາດ ຄວາມບໍ່ເກີດຂຶ້ນຂອງສັດທີ່ມີຢູ່[໑]

ສະມະນະພາມພວກໜຶ່ງບັນຍັດນິບພານໃນປັດຈຸບັນ

ລວມຄວາມວ່າສະມະນະພາມພວກໜຶ່ງ ບັນຍັດອັດຕາທີ່ມີຢູ່ວ່າໝັ້ນຍືນຫຼັງຈາກຕາຍແລ້ວແດ່ ບັນຍັດຄວາມຂາດສູນ ຄວາມພິນາດ ຄວາມບໍ່ເກີດຂຶ້ນຂອງສັດທີ່ມີຢູ່ແດ່ ບັນຍັດນິບພານໃນປັດຈຸບັນແດ່

ວາທະສະແດງທິດຖິເຫຼົ່ານີ້ ຂະຫຍາຍເປັນ ໕ ປະການແລ້ວ ຫຍໍ້ເປັນ ໓ ປະການ ຫຍໍ້ເປັນ ໓ ປະການແລ້ວ ຂະຫຍາຍເປັນ ໕ ປະການ ດັ່ງນີ້ແລ ນີ້ເປັນອຸດເທດຂອງວາທະສະແດງທິດຖິ ໕ ປະການ ໓ ໝວດ

## ສັນຍີວາທະ ໝວດລະ ໗

[໔໔] ພິກຂຸທັງຫຼາຍ ໃນສັນຍີວາທະເຫຼົ່ານັ້ນ ສະມະນະພາມເຫຼົ່າໃດເຫຼົ່າໜຶ່ງ ບັນຍັດອັດຕາທີ່ມີສັນຍາວ່າໝັ້ນຍືນຫຼັງຈາກຕາຍແລ້ວ ຄື

໑. ບັນຍັດອັດຕາທີ່ມີສັນຍາ ມີຮູບວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໔. ບັນຍັດອັດຕາທີ່ມີສັນຍາ ບໍ່ມີຮູບວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໓. ບັນຍັດອັດຕາທີ່ມີສັນຍາ ທັງທີ່ມີຮູບແລະບໍ່ມີຮູບວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໔. ບັນຍັດອັດຕາທີ່ມີສັນຍາ ມີຮູບກໍບໍ່ແມ່ນ ບໍ່ມີຮູບກໍບໍ່ແມ່ນວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໕. ບັນຍັດອັດຕາທີ່ມີສັນຍາ ມີສັນຍາແນວດຽວກັນວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໖. ບັນຍັດອັດຕາທີ່ມີສັນຍາ ມີສັນຍາຕ່າງໆກັນວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໗. ບັນຍັດອັດຕາທີ່ມີສັນຍາ ມີສັນຍາເລັກໜ້ອຍວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໘. ບັນຍັດອັດຕາທີ່ມີສັນຍາ ມີສັນຍາຫາປະມານບໍ່ໄດ້ວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່

ແຕ່ມີສະມະນະພາມພວກໜຶ່ງ ກ່າວຢັ້ງຢືນວິນຍານກະສິນຂອງອັດຕາທີ່ມີສັນຍາເຫຼົ່ານີ້ ເຊິ່ງລ່ວງໄປແລ້ວນັ້ນວ່າ ຫາປະມານບໍ່ໄດ້ ບໍ່ຫວັ່ນໄຫວ

ພິກຂຸທັງຫຼາຍ ຕະຖາຄົດຮູ້ທິດຖິນີ້ນັ້ນເປັນຢ່າງດີ

ສະມະນະພາມເຫຼົ່າໃດເຫຼົ່າໜຶ່ງ ບັນຍັດອັດຕາທີ່ມີສັນຍາວ່າໝັ້ນຍືນຫຼັງຈາກຕາຍແລ້ວ ຄື

໑. ບັນຍັດອັດຕາທີ່ມີສັນຍາ ມີຮູບວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໔. ບັນຍັດອັດຕາທີ່ມີສັນຍາ ບໍ່ມີຮູບວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໓. ບັນຍັດອັດຕາທີ່ມີສັນຍາ ທັງທີ່ມີຮູບແລະບໍ່ມີຮູບວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໔. ບັນຍັດອັດຕາທີ່ມີສັນຍາ ມີຮູບກໍບໍ່ແມ່ນ ບໍ່ມີຮູບກໍບໍ່ແມ່ນວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໕. ບັນຍັດອັດຕາທີ່ມີສັນຍາ ມີສັນຍາແນວດຽວກັນວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່

໖. ບັນຍັດອັດຕາທີ່ມີສັນຍາ ມີສັນຍາຕ່າງກັນວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໗. ບັນຍັດອັດຕາທີ່ມີສັນຍາ ມີສັນຍາເລັກໜ້ອຍວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໘. ບັນຍັດອັດຕາທີ່ມີສັນຍາ ມີສັນຍາຫາປະມານບໍ່ໄດ້ວ່າໝັ້ນຍືນຫຼັງຈາກຕາຍ ແລ້ວແດ່

ສ່ວນສັນຍາທີ່ບໍລິສຸດປະເສີດ ເຂົາກ່າວວ່າ "ລ້ຳເລີດ" ບໍ່ມີສັນຍາອື່ນຍິ່ງກວ່າສັນຍາເຫຼົ່ານີ້ ທັງທີ່ເປັນສັນຍາໃນຮູບ ທັງທີ່ເປັນສັນຍາໃນອະຣູປະ ທັງທີ່ເປັນສັນຍາແນວດຽວກັນ ທັງທີ່ເປັນສັນຍາຕ່າງກັນ ສະມະນະພາມພວກໜຶ່ງກ່າວຢັ້ງຢືນ ອາກິນຈັນຍາຍະຕະນະຫາປະມານບໍ່ໄດ້ ບໍ່ຫວັ່ນໄຫວວ່າ "ບໍ່ມີອັນໃດ"

ສິ່ງນີ້ນັ້ນຍັງຖືກປັດໄຈປຸງແຕ່ງ ຈຶ່ງຊື່ວ່າຫຍາບ ແລະ ຄວາມດັບຂອງສິ່ງທີ່ຖືກປັດໄຈປຸງແຕ່ງກໍມີຢູ່ ຕະຖາຄົດຮູ້ວ່າ "ຄວາມດັບນີ້ມີຢູ່" ເຫັນອຸບາຍເປັນເຄື່ອງກຳຈັດສິ່ງທີ່ຖືກປັດໄຈປຸງແຕ່ງນັ້ນ ຈຶ່ງລ່ວງພົ້ນສິ່ງທີ່ຖືກປັດໄຈປຸງແຕ່ງນັ້ນໄດ້ ດ້ວຍອາການແນວນີ້

## **ອະສັນຍີວາທະ ໝວດລະ ໔**

[໔໓] ພິກຂຸທັງຫຼາຍ ໃນອະສັນຍີວາທະເຫຼົ່ານັ້ນ ສະມະນະພາມເຫຼົ່າໃດເຫຼົ່າໜຶ່ງບັນຍັດອັດຕາທີ່ບໍ່ມີສັນຍາວ່າໝັ້ນຍືນຫຼັງຈາກຕາຍແລ້ວ ຄື

໑. ບັນຍັດອັດຕາທີ່ບໍ່ມີສັນຍາ ມີຮູບວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໒. ບັນຍັດອັດຕາທີ່ບໍ່ມີສັນຍາ ບໍ່ມີຮູບວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໓. ບັນຍັດອັດຕາທີ່ບໍ່ມີສັນຍາ ທັງທີ່ມີຮູບແລະບໍ່ມີຮູບວ່າ ໝັ້ນຍືນຫຼັງຈາກຕາຍ ແລ້ວແດ່
໔. ບັນຍັດອັດຕາທີ່ບໍ່ມີສັນຍາ ມີຮູບກໍບໍ່ແມ່ນ ບໍ່ມີຮູບກໍບໍ່ແມ່ນວ່າ ໝັ້ນຍືນຫຼັງຈາກ ຕາຍແລ້ວແດ່

ພິກຂຸທັງຫຼາຍ ໃນອະສັນຍີວາທະເຫຼົ່ານັ້ນ ສະມະນະພາມຜູ້ມີອະສັນຍີວາທະພວກໜຶ່ງຄັດຄ້ານສະມະນະພາມພວກທີ່ບັນຍັດອັດຕາທີ່ມີສັນຍາວ່າໝັ້ນຍືນ ຫຼັງຈາກຕາຍແລ້ວເຫຼົ່ານັ້ນ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນສັນຍາເປັນຄືພະຍາດ ເປັນຄືຫົວຝີ ເປັນຄືລູກສອນ ຄວາມບໍ່ມີສັນຍານີ້ແລ ສະງົບປະນີດ ພິກຂຸທັງຫຼາຍ ຕະຖາຄົດຮູ້ທິດຖິນີ້ນັ້ນເປັນຢ່າງດີ

ສະມະນະພາມເຫຼົ່າໃດເຫຼົ່າໜຶ່ງ ບັນຍັດອັດຕາທີ່ບໍ່ມີສັນຍາວ່າ ໝັ້ນຍືນ ຫຼັງຈາກຕາຍແລ້ວ ຄື

໑. ບັນຍັດອັດຕາທີ່ບໍ່ມີສັນຍາ ມີຮູບວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໒. ບັນຍັດອັດຕາທີ່ບໍ່ມີສັນຍາ ບໍ່ມີຮູບວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໓. ບັນຍັດອັດຕາທີ່ບໍ່ມີສັນຍາ ທັງທີ່ມີຮູບແລະບໍ່ມີຮູບວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໔. ບັນຍັດອັດຕາທີ່ບໍ່ມີສັນຍາ ມີຮູບກໍບໍ່ແມ່ນ ບໍ່ມີຮູບກໍບໍ່ແມ່ນວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່

ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ທີ່ສະມະນະ ຫຼື ພາມຄົນໃດຄົນໜຶ່ງຈະເພິ່ງກ່າວແນວນີ້ວ່າ "ເຮົາຈັກບັນຍັດການມາຫຼືການໄປ ການຈຸຕິຫຼືການເກີດ ຄວາມຈະເລີນ ຄວາມງອກງາມ ຫຼື ຄວາມໄພບູນ ເວັ້ນຮູບ ເວັ້ນເວທະນາ ເວັ້ນສັນຍາ ເວັ້ນສັງຂານ ເວັ້ນວິນຍານ"

ສິ່ງນີ້ນັ້ນຍັງຖືກປັດໄຈປຸງແຕ່ງ ຈຶ່ງຊື່ວ່າຫຍາບ ແລະ ຄວາມດັບຂອງສິ່ງທີ່ຖືກປັດໄຈປຸງແຕ່ງກໍມີຢູ່ ຕະຖາຄົດຮູ້ວ່າ "ຄວາມດັບນີ້ມີຢູ່" ເຫັນອຸບາຍເປັນເຄື່ອງກໍາຈັດສິ່ງທີ່ຖືກປັດໄຈປຸງແຕ່ງນັ້ນ ຈຶ່ງລ່ວງພົ້ນສິ່ງທີ່ຖືກປັດໄຈປຸງແຕ່ງນັ້ນໄດ້ ດ້ວຍອາການແນວນີ້

## ເນວະສັນຍີນາສັນຍີວາທະ ໝວດລະ ໔

[໒໔] ພິກຂຸທັງຫຼາຍ ໃນເນວະສັນຍີນາສັນຍີວາທະເຫຼົ່ານັ້ນ ສະມະນະພາມເຫຼົ່າໃດເຫຼົ່າໜຶ່ງບັນຍັດອັດຕາທີ່ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນວ່າໝັ້ນຍືນ ຫຼັງຈາກຕາຍແລ້ວ ຄື

໑. ບັນຍັດອັດຕາທີ່ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນເຊິ່ງມີຮູບວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໒. ບັນຍັດອັດຕາທີ່ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ເຊິ່ງບໍ່ມີຮູບວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໓. ບັນຍັດອັດຕາທີ່ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ທັງທີ່ມີຮູບແລະບໍ່ມີຮູບວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່
໔. ບັນຍັດອັດຕາທີ່ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ມີຮູບກໍບໍ່ແມ່ນ ບໍ່ມີຮູບກໍບໍ່ແມ່ນວ່າໝັ້ນຍືນ ຫຼັງຈາກຕາຍແລ້ວແດ່

ໃນເນວະສັນຍີນາສັນຍີວາທະເຫຼົ່ານັ້ນ ສະມະນະພາມຜູ້ມີເນວະສັນຍີນາສັນຍີວາທະພວກໜຶ່ງຄັດຄ້ານສະມະນະພາມພວກທີ່ບັນຍັດອັດຕາທີ່ມີສັນຍາວ່າໝັ້ນຍືນ ຫຼັງຈາກຕາຍແລ້ວເຫຼົ່ານັ້ນ ຄັດຄ້ານແມ່ນສະມະນະພາມພວກທີ່ບັນຍັດອັດຕາທີ່ບໍ່ມີສັນຍາວ່າໝັ້ນຍືນ ຫຼັງຈາກຕາຍແລ້ວເຫຼົ່ານັ້ນ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນສັນຍາເປັນຄືພະຍາດ ເປັນຄືຫົວຝີ ເປັນຄືລູກສອນ ຄວາມບໍ່ມີສັນຍາເປັນຄວາມຫຼົງ ຄວາມມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນນີ້ແລ ສະງົບ ປະນີດ

ພິກຂຸທັງຫຼາຍ ຕະຖາຄົດຮູ້ທິດຖິນີ້ນັ້ນເປັນຢ່າງດີ

ສະມະນະພາມເຫຼົ່າໃດເຫຼົ່າໜຶ່ງ ບັນຍັດອັດຕາທີ່ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນວ່າ ໝັ້ນຍືນຫຼັງຈາກຕາຍແລ້ວ ຄື

໑. ບັນຍັດອັດຕາທີ່ບໍ່ມີສັນຍາກໍບໍ່ແມ່ນ ມີສັນຍາກໍບໍ່ແມ່ນເຊິ່ງມີຮູບວ່າໝັ້ນຍືນຫຼັງຈາກຕາຍແລ້ວແດ່
໒. ບັນຍັດອັດຕາທີ່ບໍ່ມີສັນຍາກໍບໍ່ແມ່ນ ມີສັນຍາກໍບໍ່ແມ່ນເຊິ່ງບໍ່ມີຮູບວ່າໝັ້ນຍືນຫຼັງຈາກຕາຍແລ້ວແດ່
໓. ບັນຍັດອັດຕາທີ່ບໍ່ມີສັນຍາກໍບໍ່ແມ່ນ ມີສັນຍາກໍບໍ່ແມ່ນ ທັງທີ່ມີຮູບແລະບໍ່ມີຮູບວ່າໝັ້ນຍືນຫຼັງຈາກຕາຍແລ້ວແດ່
໔. ບັນຍັດອັດຕາທີ່ບໍ່ມີສັນຍາກໍບໍ່ແມ່ນ ມີສັນຍາກໍບໍ່ແມ່ນ ມີຮູບກໍບໍ່ແມ່ນ ບໍ່ມີຮູບກໍບໍ່ແມ່ນວ່າໝັ້ນຍືນຫຼັງຈາກຕາຍແລ້ວແດ່

ພິກຂຸທັງຫຼາຍ ສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງບັນຍັດການເຂົ້າເຖິງອາຍະຕະນະ[໑] ນີ້ດ້ວຍເຫດພຽງສິ່ງທີ່ເພິ່ງຮູ້ແຈ້ງ[໒]ໂດຍໄດ້ເຫັນໄດ້ຍິນ ແລະ ໄດ້ຮູ້ແລະສັງຂານ[໓] ການບັນຍັດຂອງສະມະນະ ຫຼື ພາມແນວນີ້ ເຂົາກ່າວວ່າເປັນຄວາມພິນາດຂອງການເຂົ້າເຖິງອາຍະຕະນະນີ້ ຄວາມຈິງອາຍະຕະນະນີ້ ບັນດິດບໍ່ກ່າວວ່າເພິ່ງບັນລຸດ້ວຍການມີສັງຂານ ແຕ່ທ່ານກ່າວວ່າອາຍະຕະນະນີ້ເພິ່ງບັນລຸດ້ວຍການມີສັງຂານທີ່ເຫຼືອ

ສິ່ງນີ້ນັ້ນຍັງຖືກປັດໄຈປຸງແຕ່ງ ຈຶ່ງຊື່ວ່າຫຍາບ ແລະ ຄວາມດັບຂອງສິ່ງທີ່ຖືກປັດໄຈປຸງແຕ່ງກໍມີຢູ່ ຕະຖາຄົດຮູ້ວ່າ “ຄວາມດັບນີ້ມີຢູ່” ເຫັນອຸບາຍເປັນເຄື່ອງກຳຈັດສິ່ງທີ່ຖືກປັດໄຈປຸງແຕ່ງນັ້ນ ຈຶ່ງລ່ວງພົ້ນສິ່ງທີ່ຖືກປັດໄຈປຸງແຕ່ງນັ້ນໄດ້ ດ້ວຍອາການແນວນີ້

## ອຸດເສທະວາທະ

[໘໕] ພິກຂຸ ທັງຫຼາຍ ໃນອຸດເສທະວາທະເຫຼົ່ານັ້ນ ສະມະນະພາມເຫຼົ່າໃດເຫຼົ່າໜຶ່ງບັນຍັດຄວາມຂາດສູນ ຄວາມພິນາດ ຄວາມບໍ່ເກີດຂຶ້ນຂອງສັດທີ່ມີຢູ່ໃນອຸດເສທະວາທະເຫຼົ່ານັ້ນ ສະມະນະພາມຜູ້ມີອຸດເສທະວາທະພວກໜຶ່ງຄັດຄ້ານ ສະມະນະພາມພວກທີ່ບັນຍັດອັດຕາທີ່ມີສັນຍາວ່າໝັ້ນຍືນ ຫຼັງຈາກຕາຍແລ້ວເຫຼົ່ານັ້ນ ຄັດຄ້ານແມ່ນສະມະນະພາມພວກທີ່ບັນຍັດອັດຕາທີ່ບໍ່ມີສັນຍາວ່າໝັ້ນຍືນຫຼັງຈາກຕາຍແລ້ວເຫຼົ່ານັ້ນ ຄັດຄ້ານແມ່ນສະມະນະພາມພວກທີ່ບັນຍັດອັດຕາທີ່ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນວ່າໝັ້ນຍືນຫຼັງຈາກຕາຍແລ້ວເຫຼົ່ານັ້ນ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນສະມະນະພາມເຫຼົ່ານີ້ແມ່ນທັງໝົດ ຍ່ອມຖືການວຽນລອຍໃນຊາດໜ້າ ກ່າວຢັ້ງຢືນຄວາມຫວັງແນວດຽວວ່າ "ເຮົາລະໂລກນີ້ໄປແລ້ວ ຈັກເປັນແນວນີ້ ເຮົາລະໂລກນີ້ໄປແລ້ວ ຈັກເປັນແນວນີ້"

ປຽບເໝືອນ ພໍ່ຄ້າໄປຄ້າຂາຍຍ່ອມມີຄວາມຫວັງແນວນີ້ວ່າ "ເຮົາຈັກມີກຳໄລຈາກການຄ້າທີ່ນີ້ ຍ້ອນການຂາຍທ່ຽວນີ້ ເຮົາຈັກໄດ້ກຳໄລທີ່ນີ້" ສັນໃດ ສະມະນະພາມເຫຼົ່ານີ້ກໍສັນນັ້ນ ຄືກັນເຫັນຈະຫວັງກຳໄລກັບຄືນເໝືອນພໍ່ຄ້າວ່າ "ເຮົາລະໂລກນີ້ໄປແລ້ວ ຈັກເປັນແນວນີ້ ເຮົາລະໂລກນີ້ໄປແລ້ວ ຈັກເປັນແນວນີ້"

ພິກຂຸທັງຫຼາຍ ຕະຖາຄົດຮູ້ທິດຖິນີ້ນັ້ນເປັນຢ່າງດີ

ສະມະນະພາມພວກທີ່ບັນຍັດຄວາມຂາດສູນ ຄວາມພິນາດ ຄວາມບໍ່ເກີດຂຶ້ນຂອງສັດທີ່ມີຢູ່ ເປັນຜູ້ຢ້ານສັກກາຍະ[໑] ລັງກຽດສັກກາຍະ ວົນວຽນໄປຕາມສັກກາຍະຢູ່ນັ້ນເອງ

ປຽບຄື ໝາທີ່ເຂົາໃຊ້ໂຊ່ລ່າມມັດໄວ້ຢູ່ເສົາ ຫຼື ຢູ່ຫຼັກຢ່າງໝັ້ນຄົງ ຍ່ອມແລ່ນວົນເສົາ ຫຼື ຫຼັກນັ້ນເອງ ສັນໃດ ສະມະນະພາມເຫຼົ່ານີ້ກໍຄືກັນສັນນັ້ນ ເປັນຜູ້ຢ້ານສັກກາຍະ ລັງກຽດສັກກາຍະ ວົນວຽນໄປຕາມສັກກາຍະຢູ່ນັ້ນເອງ

ສິ່ງນີ້ນັ້ນຍັງຖືກປັດໄຈປຸງແຕ່ງ ຈຶ່ງຊື່ວ່າຫຍາບ ແລະ ຄວາມດັບຂອງສິ່ງທີ່ຖືກປັດໄຈປຸງແຕ່ງກໍມີຢູ່ ຕະຖາຄົດຮູ້ວ່າ "ຄວາມດັບນີ້ມີຢູ່" ເຫັນອຸບາຍເປັນເຄື່ອງກຳຈັດສິ່ງທີ່ຖືກປັດໄຈປຸງແຕ່ງນັ້ນ ຈຶ່ງລ່ວງພົ້ນສິ່ງທີ່ຖືກປັດໄຈປຸງແຕ່ງນັ້ນໄດ້ ດ້ວຍອາການແນວນີ້

[໔໖] ພິກຂຸທັງຫຼາຍ ສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງ ກຳນົດຂັນສ່ວນອະນາຄົດ ມີຄວາມເຫັນຄວນຕາມຂັນສ່ວນອະນາຄົດ ຜາຣົບຂັນສ່ວນອະນາຄົດ ປະກາດວາທະສະແດງທິດຖິຕ່າງ ໆ ຫຼາຍປະການ ສະມະນະພາມເຫຼົ່ານັ້ນທັງໝົດ ປະກາດວາທະສະແດງທິດຖິຕ່າງ ໆ ໕ ປະການນີ້ທີ່ນັ້ນ ຫຼື ປະກາດສ່ວນໃດສ່ວນໜຶ່ງຂອງວາທະ ສະແດງທິດຖິຕ່າງ ໆ ໕ ປະການນີ້

## ວາທະສະແດງທິດຖິກ່ຽວກັບຂັນສ່ວນອະດີດ ໑໖

[໔໗] ພິກຂຸທັງຫຼາຍ ມີສະມະນະພາມພວກໜຶ່ງກຳນົດຂັນສ່ວນອະດີດ ມີຄວາມເຫັນຄວນຕາມຂັນສ່ວນອະດີດ ຜາຣົບຂັນສ່ວນອະດີດ ປະກາດວາທະສະແດງທິດຖິຕ່າງ ໆ ຄື

໑. ສະມະນະພາມພວກໜຶ່ງກ່າວຢັ້ງຢືນແນວນີ້ວ່າ "ອັດຕາແລະໂລກທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"[໑]

໒. ສະມະນະພາມພວກໜຶ່ງກ່າວຢັ້ງຢືນແນວນີ້ວ່າ “ອັດຕາແລະໂລກບໍ່ທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ”

໓. ສະມະນະພາມພວກໜຶ່ງກ່າວຢັ້ງຢືນແນວນີ້ວ່າ “ອັດຕາແລະໂລກມີທັງທ່ຽງ ແລະບໍ່ທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ”

໔. ສະມະນະພາມພວກໜຶ່ງກ່າວຢັ້ງຢືນແນວນີ້ວ່າ “ອັດຕາແລະໂລກທ່ຽງກໍບໍ່ແມ່ນ ບໍ່ທ່ຽງກໍບໍ່ແມ່ນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ”

໕. ສະມະນະພາມພວກໜຶ່ງກ່າວຢັ້ງຢືນແນວນີ້ວ່າ “ອັດຕາແລະໂລກມີບ່ອນສຸດ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ”

໖. ສະມະນະພາມພວກໜຶ່ງກ່າວຢັ້ງຢືນແນວນີ້ວ່າ “ອັດຕາແລະໂລກບໍ່ມີບ່ອນສຸດ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ”

໗. ສະມະນະພາມພວກໜຶ່ງກ່າວຢັ້ງຢືນແນວນີ້ວ່າ “ອັດຕາແລະໂລກມີທັງບ່ອນສຸດ ແລະບໍ່ມີບ່ອນສຸດ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ”

໘. ສະມະນະພາມພວກໜຶ່ງກ່າວຢັ້ງຢືນແນວນີ້ວ່າ “ອັດຕາແລະໂລກມີບ່ອນສຸດກໍບໍ່ແມ່ນ ບໍ່ມີບ່ອນສຸດກໍບໍ່ແມ່ນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ”

໙. ສະມະນະພາມພວກໜຶ່ງກ່າວຢັ້ງຢືນແນວນີ້ວ່າ “ອັດຕາແລະໂລກມີສັນຍາແນວດຽວກັນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ”

໑໐. ສະມະນະພາມພວກໜຶ່ງກ່າວຢັ້ງຢືນແນວນີ້ວ່າ “ອັດຕາແລະໂລກມີສັນຍາຕ່າງກັນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ”

໑໑. ສະມະນະພາມພວກໜຶ່ງກ່າວຢັ້ງຢືນແນວນີ້ວ່າ “ອັດຕາແລະໂລກມີສັນຍາເລັກໜ້ອຍ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ”

໑໒. ສະມະນະພາມພວກໜຶ່ງກ່າວຢັ້ງຢືນແນວນີ້ວ່າ “ອັດຕາແລະໂລກມີສັນຍາຫາປະມານບໍ່ໄດ້ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ”

໑໓. ສະມະນະພາມພວກໜຶ່ງກ່າວຢັ້ງຢືນແນວນີ້ວ່າ “ອັດຕາແລະໂລກມີສຸກຢ່າງດຽວ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ”

໑໔. ສະມະນະພາມພວກໜຶ່ງກ່າວຢັ້ງຢືນແນວນີ້ວ່າ “ອັດຕາແລະໂລກມີທຸກຢ່າງດຽວ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ”

໑໕. ສະມະນະພາມພວກໜຶ່ງກ່າວຢັ້ງຢືນແນວນີ້ວ່າ “ອັດຕາແລະໂລກມີທັງສຸກແລະທຸກ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ”

໑໖. ສະມະນະພາມພວກໜຶ່ງກ່າວຢັ້ງຢືນແນວນີ້ວ່າ “ອັດຕາແລະໂລກມີທຸກກໍບໍ່ແມ່ນ ມີສຸກກໍບໍ່ແມ່ນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ”

[໔໘] ພິກຂຸທັງຫຼາຍ ໃນວາທະເຫຼົ່ານັ້ນ ສະມະນະພາມເຫຼົ່າໃດເຫຼົ່າໜຶ່ງເຊິ່ງມີວາທະແນວ

ນີ້ ມີທິດຖິແນວນີ້ວ່າ "ອັດຕາແລະໂລກທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ເປັນໄປບໍ່ໄດ້ເລີຍທີ່ຍານສະເພາະຕົນອັນບໍລິສຸດຜຸດຜ່ອງ ເຊິ່ງເປັນທຳອື່ນຈາກຄວາມເຊື່ອ ອື່ນຈາກຄວາມພໍໃຈ ອື່ນຈາກການຟັງຕາມກັນມາ ອື່ນຈາກການນຶກຕາມອາການ ອື່ນຈາກການເຂົ້າໄດ້ກັບທິດສະດີທີ່ຄຶດໄວ້ ຈັກມີແກ່ສະມະນະພາມເຫຼົ່ານັ້ນໄດ້

ພິກຂຸທັງຫຼາຍ ເມື່ອບໍ່ມີຍານສະເພາະຕົນອັນບໍລິສຸດຜຸດຜ່ອງ ສະມະນະພາມເຫຼົ່ານັ້ນຍ່ອມຍຶດຖືພຽງສ່ວນແຫ່ງຄວາມຮູ້ທໍ່ນັ້ນໃນເລື່ອງນັ້ນ ແມ່ນສ່ວນແຫ່ງຄວາມຮູ້ນັ້ນບັນດິດກ່າວວ່າເປັນອຸປາທານຂອງສະມະນະພາມເຫຼົ່ານັ້ນ

ສິ່ງນີ້ນັ້ນຍັງຖືກປັດໄຈປຸງແຕ່ງ ຈຶ່ງຊື່ວ່າຫຍາບ ແລະ ຄວາມດັບຂອງສິ່ງທີ່ຖືກປັດໄຈປຸງແຕ່ງກໍມີຢູ່ ຕະຖາຄົດຮູ້ວ່າ "ຄວາມດັບນີ້ມີຢູ່" ເຫັນອຸບາຍເປັນເຄື່ອງກຳຈັດສິ່ງທີ່ຖືກປັດໄຈປຸງແຕ່ງນັ້ນ ຈຶ່ງລ່ວງພົ້ນສິ່ງທີ່ຖືກປັດໄຈປຸງແຕ່ງນັ້ນໄດ້ ດ້ວຍອາການແນວນີ້

[໘໙] ພິກຂຸທັງຫຼາຍ ໃນວາທະເຫຼົ່ານັ້ນ ສະມະນະພາມເຫຼົ່າໃດເຫຼົ່າໜຶ່ງເຊິ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ "ອັດຕາແລະໂລກບໍ່ທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

ຯລຯ "ອັດຕາ ແລະ ໂລກທັງທ່ຽງ ແລະບໍ່ທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

ຯລຯ "ອັດຕາ ແລະ ໂລກທ່ຽງກໍບໍ່ແມ່ນ ບໍ່ທ່ຽງກໍບໍ່ແມ່ນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

ຯລຯ "ອັດຕາ ແລະ ໂລກມີທີ່ສຸດ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

ຯລຯ "ອັດຕາ ແລະ ໂລກບໍ່ມີທີ່ສຸດ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

ຯລຯ "ອັດຕາ ແລະ ໂລກທັງມີທີ່ສຸດ ແລະບໍ່ມີທີ່ສຸດ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

ຯລຯ "ອັດຕາ ແລະ ໂລກມີທີ່ສຸດກໍບໍ່ແມ່ນ ບໍ່ມີທີ່ສຸດກໍບໍ່ແມ່ນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

ຯລຯ "ອັດຕາ ແລະ ໂລກມີສັນຍາແນວດຽວກັນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

ຯລຯ "ອັດຕາ ແລະ ໂລກມີສັນຍາຕ່າງກັນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

ຯລຯ "ອັດຕາ ແລະ ໂລກມີສັນຍາເລັກໜ້ອຍ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

ຯລຯ "ອັດຕາ ແລະ ໂລກມີສັນຍາຫາປະມານບໍ່ໄດ້ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

ຯລຯ "ອັດຕາ ແລະ ໂລກມີສຸກແນວດຽວ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

ຯລຯ "ອັດຕາ ແລະ ໂລກມີທຸກແນວດຽວ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

ຯລຯ "ອັດຕາ ແລະ ໂລກມີທັງສຸກແລະທຸກ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

ສະມະນະພາມເຫຼົ່າໃດເຫຼົ່າໜຶ່ງ ເຊິ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ "ອັດຕາແລະໂລກມີທຸກກໍບໍ່ແມ່ນ ມີສຸກກໍບໍ່ແມ່ນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ເປັນໄປບໍ່ໄດ້ທີ່ຍານສະເພາະຕົນອັນ

ບໍລິສຸດຜຸດຜ່ອງ ເຊິ່ງເປັນທຳອື່ນຈາກຄວາມເຊື່ອ ອື່ນຈາກຄວາມພໍໃຈ ອື່ນຈາກການຟັງຕາມກັນມາ ອື່ນຈາກການນຶກຕາມອາການ ອື່ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດໄວ້ ຈັກມີແກ່ສະມະນະພາມເຫຼົ່ານັ້ນໄດ້

ພິກຂຸທັງຫຼາຍ ເມື່ອບໍ່ມີຍານສະເພາະຕົນອັນບໍລິສຸດຜຸດຜ່ອງ ສະມະນະພາມເຫຼົ່ານັ້ນຍ່ອມຍຶດຖືພຽງສ່ວນແຫ່ງຄວາມຮູ້ທີ່ນັ້ນໃນເລື້ອງນັ້ນ ແມ່ນສ່ວນແຫ່ງຄວາມຮູ້ນັ້ນບັນດິດກ່າວວ່າເປັນອຸປາທານຂອງສະມະນະພາມເຫຼົ່ານັ້ນ

ສິ່ງນີ້ນັ້ນຍັງຖືກປັດໄຈປຸງແຕ່ງ ຈຶ່ງຊື່ວ່າຫຍາບ ແລະ ຄວາມດັບຂອງສິ່ງທີ່ຖືກປັດໄຈປຸງແຕ່ງກໍມີຢູ່ ຕະຖາຄົດຮູ້ວ່າ “ຄວາມດັບນີ້ມີຢູ່” ເຫັນອຸບາຍເປັນເຄື່ອງກຳຈັດສິ່ງທີ່ຖືກປັດໄຈປຸງແຕ່ງນັ້ນ ຈຶ່ງລ່ວງພົ້ນສິ່ງທີ່ຖືກປັດໄຈປຸງແຕ່ງນັ້ນໄດ້ ດ້ວຍອາການແນວນີ້

## ວາທະຂອງພຣະພຸດທະອົງ

[໓໐] ພິກຂຸທັງຫຼາຍ ຍ້ອນການສັງໂຍດ[๑]ຕັ້ງຢູ່ບໍ່ໄດ້ໂດຍປະການທັງປວງ ຍ້ອນສະລະຄືນທິດຖິອັນຄວນຕາມຂັນສ່ວນອະດີດ ແລະ ຍ້ອນສະລະຄືນທິດຖິອັນຄວນຕາມຂັນສ່ວນອະນາຄົດໄດ້ ສະມະນະ ຫຼື ພາມລາງຄົນໃນໂລກນີ້ຈຶ່ງເຂົ້າເຖິງປີຕິອັນເກີດຈາກວິເວກຢູ່ ດ້ວຍສຳຄັນວ່າ “ການທີ່ເຮົາເຂົ້າເຖິງປີຕິອັນເກີດຈາກວິເວກຢູ່ນີ້ເອງ ສະງົບ ປະນີດ” ປີຕິອັນເກີດຈາກວິເວກນັ້ນຂອງທ່ານຍ່ອມດັບໄປ ຍ້ອນປີຕິອັນເກີດຈາກວິເວກດັບໄປ ໂທມະນັດຈຶ່ງເກີດຂຶ້ນ ຍ້ອນໂທມະນັດດັບໄປ ປີຕິອັນເກີດຈາກວິເວກຈຶ່ງເກີດຂຶ້ນ

ປຽບເໝືອນ ເງົາລະບ່ອນໃດໄປ ແດດກໍແຜ່ໄປເຖິງບ່ອນນັ້ນ ແດດລະບ່ອນໃດໄປ ເງົາກໍປົກຄຸມໄປເຖິງບ່ອນນັ້ນ ແມ່ນສັນໃດ ຍ້ອນປີຕິອັນເກີດຈາກວິເວກດັບໄປ ໂທມະນັດຈຶ່ງເກີດຂຶ້ນ ຍ້ອນໂທມະນັດດັບໄປ ປີຕິອັນເກີດຈາກວິເວກຈຶ່ງເກີດຂຶ້ນ ຄືກັນສັນນັ້ນ

ພິກຂຸທັງຫຼາຍ ຕະຖາຄົດຮູ້ທິດຖິນີ້ນັ້ນເປັນຢ່າງດີ ຍ້ອນການສັງໂຍດຕັ້ງຢູ່ບໍ່ໄດ້ໂດຍປະການທັງປວງ ຍ້ອນສະລະຄືນທິດຖິອັນຄວນຕາມຂັນສ່ວນອະດີດ ແລະ ຍ້ອນສະລະຄືນທິດຖິອັນຄວນຕາມຂັນສ່ວນອະນາຄົດໄດ້ ສະມະນະ ຫຼື ພາມນີ້ຈຶ່ງເຂົ້າເຖິງປີຕິອັນເກີດຈາກວິເວກຢູ່ ດ້ວຍສຳຄັນວ່າ “ການທີ່ເຮົາເຂົ້າເຖິງປີຕິອັນເກີດຈາກວິເວກຢູ່ນີ້ເອງ ສະງົບ ປະນີດ” ປີຕິອັນເກີດຈາກວິເວກນັ້ນຂອງທ່ານຍ່ອມດັບໄປ ຍ້ອນປີຕິອັນເກີດຈາກວິເວກດັບໄປ ໂທມະນັດຈຶ່ງເກີດຂຶ້ນ ຍ້ອນໂທມະນັດດັບໄປ ປີຕິອັນເກີດຈາກວິເວກຈຶ່ງເກີດຂຶ້ນ

ສິ່ງນີ້ນັ້ນຍັງຖືກປັດໄຈປຸງແຕ່ງ ຈຶ່ງຊື່ວ່າຫຍາບ ແລະ ຄວາມດັບຂອງສິ່ງທີ່ຖືກປັດໄຈປຸງແຕ່ງກໍມີຢູ່ ຕະຖາຄົດຮູ້ວ່າ “ຄວາມດັບນີ້ມີຢູ່” ເຫັນອຸບາຍເປັນເຄື່ອງກຳຈັດສິ່ງທີ່ຖືກປັດໄຈປຸງ

ແຕ່ງນັ້ນ ຈຶ່ງລ່ວງພົ້ນສິ່ງທີ່ຖືກປັດໄຈປຸງແຕ່ງນັ້ນໄດ້ ດ້ວຍອາການແນວນີ້

[໓໑] ພິກຂຸທັງຫຼາຍ ຍ້ອນການສັງໂຍດຕັ້ງຢູ່ບໍ່ໄດ້ໂດຍປະການທັງປວງ ຍ້ອນສະລະຄືນທິດຖິອັນຄວນຕາມຂັນສ່ວນອະດີດ ແລະ ຍ້ອນສະລະຄືນທິດຖິອັນຄວນຕາມຂັນສ່ວນອະນາຄົດ ຍ້ອນກ້າວລ່ວງປິຕິອັນເກີດຈາກວິເວກໄດ້ ສະມະນະຫຼືພາມລາງຄົນ ໃນໂລກນີ້ຈຶ່ງເຂົ້າເຖິງສຸກອັນປາສະຈາກອາມິດຢູ່ ດ້ວຍສຳຄັນວ່າ "ການທີ່ເຮົາເຂົ້າເຖິງສຸກອັນປາສະຈາກອາມິດຢູ່ນີ້ເອງ ສະງົບ ປະນີດ" ສຸກອັນປາສະຈາກອາມິດນັ້ນຂອງທ່ານຍ່ອມດັບໄປ ຍ້ອນສຸກອັນປາສະຈາກອາມິດດັບໄປ ປິຕິອັນເກີດຈາກວິເວກຈຶ່ງເກີດຂຶ້ນ ຍ້ອນປິຕິອັນເກີດຈາກວິເວກດັບໄປ ສຸກອັນປາສະຈາກອາມິດຈຶ່ງເກີດຂຶ້ນ

ປຽບເໝືອນ ເງົາລະບ່ອນໃດໄປ ແດດກໍແຜ່ໄປເຖິງບ່ອນນັ້ນ ແດດລະບ່ອນໃດໄປ ເງົາກໍປົກຄຸມໄປເຖິງບ່ອນນັ້ນ ແມ່ນສັນໃດ ຍ້ອນສຸກອັນປາສະຈາກອາມິດດັບໄປ ປິຕິອັນເກີດຈາກວິເວກຈຶ່ງເກີດຂຶ້ນ ຍ້ອນປິຕິອັນເກີດຈາກວິເວກດັບໄປ ສຸກອັນປາສະຈາກອາມິດຈຶ່ງເກີດຂຶ້ນ ຄືກັນສັນນັ້ນ

ພິກຂຸທັງຫຼາຍ ຕະຖາຄົດຮູ້ທິດຖິນີ້ນັ້ນເປັນຢ່າງດີ ຍ້ອນການສັງໂຍດຕັ້ງຢູ່ບໍ່ໄດ້ໂດຍປະການທັງປວງ ຍ້ອນສະລະຄືນທິດຖິອັນຄວນຕາມຂັນສ່ວນອະດີດ ແລະຍ້ອນສະລະຄືນທິດຖິອັນຄວນຕາມຂັນສ່ວນອະນາຄົດ ຍ້ອນກ້າວລ່ວງປິຕິອັນເກີດຈາກວິເວກໄດ້ ສະມະນະ ຫຼື ພາມນີ້ຈຶ່ງເຂົ້າເຖິງສຸກອັນປາສະຈາກອາມິດຢູ່ ດ້ວຍສຳຄັນວ່າ "ການທີ່ເຮົາເຂົ້າເຖິງສຸກອັນປາສະຈາກອາມິດຢູ່ນີ້ເອງ ສະງົບ ປະນີດ" ສຸກອັນປາສະຈາກອາມິດນັ້ນຂອງທ່ານຍ່ອມດັບໄປ ຍ້ອນສຸກອັນປາສະຈາກອາມິດດັບໄປ ປິຕິອັນເກີດຈາກວິເວກຈຶ່ງເກີດຂຶ້ນ ຍ້ອນປິຕິອັນເກີດຈາກວິເວກດັບໄປ ສຸກອັນປາສະຈາກອາມິດຈຶ່ງເກີດຂຶ້ນ

ສິ່ງນີ້ນັ້ນຍັງຖືກປັດໄຈປຸງແຕ່ງ ຈຶ່ງຊື່ວ່າຫຍາບ ແລະ ຄວາມດັບຂອງສິ່ງທີ່ຖືກປັດໄຈປຸງແຕ່ງກໍມີຢູ່ ຕະຖາຄົດຮູ້ວ່າ "ຄວາມດັບນີ້ມີຢູ່" ເຫັນອຸບາຍເປັນເຄື່ອງກຳຈັດສິ່ງທີ່ຖືກປັດໄຈປຸງແຕ່ງນັ້ນ ຈຶ່ງລ່ວງພົ້ນສິ່ງທີ່ຖືກປັດໄຈປຸງແຕ່ງນັ້ນໄດ້ ດ້ວຍອາການແນວນີ້

[໓໘] ພິກຂຸທັງຫຼາຍ ຍ້ອນການສັງໂຍດຕັ້ງຢູ່ບໍ່ໄດ້ໂດຍປະການທັງປວງ ຍ້ອນສະລະຄືນທິດຖິອັນຄວນຕາມຂັນສ່ວນອະດີດ ແລະ ຍ້ອນສະລະຄືນທິດຖິອັນຄວນຕາມຂັນສ່ວນອະນາຄົດ ຍ້ອນກ້າວລ່ວງປິຕິອັນເກີດຈາກວິເວກ ຍ້ອນກ້າວລ່ວງສຸກອັນປາສະຈາກອາມິດໄດ້ ສະມະນະຫຼືພາມລາງຄົນໃນໂລກນີ້ ຈຶ່ງເຂົ້າເຖິງອະທຸກຂະມະສຸກຂະເວທະນາຢູ່ ດ້ວຍສຳຄັນວ່າ "ການທີ່ເຮົາເຂົ້າເຖິງອະທຸກຂະມະສຸກຂະເວທະນາຢູ່ນີ້ເອງ ສະງົບ ປະນີດ" ອະທຸກຂະມະສຸກຂະເວທະນານັ້ນຂອງທ່ານຍ່ອມດັບໄປ ຍ້ອນອະທຸກຂະມະສຸກຂະເວທະນາດັບໄປ ສຸກອັນປາສະຈາກອາມິດ

ຈຶ່ງເກີດຂຶ້ນ ຍ້ອນສຸກອັນປາສະຈາກອາມິດດັບໄປ ອະທຸກຂະມະສຸກຂະເວທະນາຈຶ່ງເກີດຂຶ້ນ

ເງົາລະບ່ອນໃດໄປ ແດດກໍແຜ່ໄປເຖິງບ່ອນນັ້ນ ແດດລະບ່ອນໃດໄປ ເງົາກໍປົກຄຸມໄປເຖິງບ່ອນນັ້ນ ແມ່ນສັນໃດ ຍ້ອນອະທຸກຂະມະສຸກຂະເວທະນາດັບໄປ ສຸກອັນປາສະຈາກອາມິດຈຶ່ງເກີດຂຶ້ນ ຍ້ອນສຸກອັນປາສະຈາກອາມິດດັບໄປ ອະທຸກຂະມະສຸກຂະເວທະນາຈຶ່ງເກີດຂຶ້ນ ກໍກັນສັນນັ້ນ

ພິກຂຸທັງຫຼາຍ ຕະຖາຄົດຮູ້ທິດຖິນີ້ນັ້ນເປັນຢ່າງດີ ຍ້ອນການສັງໂຍດຕັ້ງຢູ່ບໍ່ໄດ້ໂດຍປະການທັງປວງ ຍ້ອນສະລະຄືນທິດຖິອັນຄວນຕາມຂັນສ່ວນອະດີດ ແລະຍ້ອນສະລະຄືນທິດຖິອັນຄວນຕາມຂັນສ່ວນອະນາຄົດໄດ້ ຍ້ອນກ້າວລ່ວງປີຕິອັນເກີດຈາກວິເວກ ຍ້ອນກ້າວລ່ວງສຸກອັນປາສະຈາກອາມິດໄດ້ ສະມະນະຫຼືພາມນີ້ຈຶ່ງເຂົ້າເຖິງອະທຸກຂະມະສຸກຂະເວທະນາຢູ່ ດ້ວຍສຳຄັນວ່າ "ການທີ່ເຮົາເຂົ້າເຖິງອະທຸກຂະມະສຸກຂະເວທະນາຢູ່ນີ້ແລ ສະງົບ ປະນີດ" ອະທຸກຂະມະສຸກຂະເວທະນານັ້ນຂອງທ່ານຍ່ອມດັບໄປ ຍ້ອນອະທຸກຂະມະສຸກຂະເວທະນາດັບໄປ ສຸກອັນປາສະຈາກອາມິດຈຶ່ງເກີດຂຶ້ນ ຍ້ອນສຸກອັນປາສະຈາກອາມິດດັບໄປ ອະທຸກຂະມະສຸກຂະເວທະນາຈຶ່ງເກີດຂຶ້ນ

ສິ່ງນີ້ນັ້ນຍັງຖືກປັດໄຈປຸງແຕ່ງ ຈຶ່ງຊື່ວ່າຫຍາບ ແລະ ຄວາມດັບຂອງສິ່ງທີ່ຖືກປັດໄຈປຸງແຕ່ງກໍມີຢູ່ ຕະຖາຄົດຮູ້ວ່າ "ຄວາມດັບນີ້ມີຢູ່" ເຫັນອຸບາຍເປັນເຄື່ອງກຳຈັດສິ່ງທີ່ຖືກປັດໄຈປຸງແຕ່ງນັ້ນ ຈຶ່ງລ່ວງພົ້ນສິ່ງທີ່ຖືກປັດໄຈປຸງແຕ່ງນັ້ນໄດ້ ດ້ວຍອາການແນວນີ້

[໓໓] ພິກຂຸທັງຫຼາຍ ຍ້ອນການສັງໂຍດຕັ້ງຢູ່ບໍ່ໄດ້ໂດຍປະການທັງປວງ ຍ້ອນສະລະຄືນທິດຖິອັນຄວນຕາມຂັນສ່ວນອະດີດ ແລະ ຍ້ອນສະລະຄືນທິດຖິອັນຄວນຕາມຂັນສ່ວນອະນາຄົດ ຍ້ອນກ້າວລ່ວງປີຕິອັນເກີດຈາກວິເວກ ຍ້ອນກ້າວລ່ວງສຸກອັນປາສະຈາກອາມິດ ຍ້ອນກ້າວລ່ວງອະທຸກຂະມະສຸກຂະເວທະນາໄດ້ ສະມະນະຫຼືພາມລາງຄົນໃນໂລກນີ້ ຈຶ່ງພິຈາລະນາເຫັນວ່າ "ເຮົາເປັນຜູ້ສະງົບລະງັບ ເປັນຜູ້ດັບ ເປັນຜູ້ບໍ່ມີອຸປາທານ"

ພິກຂຸທັງຫຼາຍ ຕະຖາຄົດຮູ້ທິດຖິນີ້ນັ້ນເປັນຢ່າງດີ ຍ້ອນການສັງໂຍດຕັ້ງຢູ່ບໍ່ໄດ້ໂດຍປະການທັງປວງ ຍ້ອນສະລະຄືນທິດຖິອັນຄວນຕາມຂັນສ່ວນອະດີດ ແລະຍ້ອນສະລະຄືນທິດຖິອັນຄວນຕາມຂັນສ່ວນອະນາຄົດ ຍ້ອນກ້າວລ່ວງປີຕິອັນເກີດຈາກວິເວກ ຍ້ອນກ້າວລ່ວງສຸກອັນປາສະຈາກອາມິດ ຍ້ອນກ້າວລ່ວງອະທຸກຂະມະສຸກຂະເວທະນາໄດ້ ສະມະນະຫຼືພາມນີ້ ຈຶ່ງພິຈາລະນາເຫັນວ່າ "ເຮົາເປັນຜູ້ສະງົບລະງັບ ເປັນຜູ້ດັບ ເປັນຜູ້ບໍ່ມີອຸປາທານ" ນີ້ແລ ທ່ານຜູ້ນີ້ຍ່ອມກ່າວຢັ້ງຢືນປະຕິປະທາທີ່ເອື້ອອຳນວຍໃຫ້ເຖິງນິບພານແນວດຽວ ໂດຍແທ້ຈິງ ແຕ່ສະມະນະຫຼືພາມນີ້ ເມື່ອຍັງຖືໝັ້ນທິດຖິອັນຄວນຕາມຂັນສ່ວນອະດີດ ກໍຊື່ວ່າ ຍັງຖືໝັ້ນຢູ່ ເມື່ອຖືໝັ້ນທິດຖິ

ອັນຄວນຕາມຂັນສ່ວນອະນາຄົດ ກໍຊື່ວ່າ ຍັງຖືໝັ້ນຢູ່ ເມື່ອຖືໝັ້ນການສັງໂຍດ ກໍຊື່ວ່າ ຍັງຖືໝັ້ນຢູ່ ເມື່ອຖືໝັ້ນປີຕິອັນເກີດຈາກວິເວກ ກໍຊື່ວ່າຍັງຖືໝັ້ນຢູ່ ເມື່ອຖືໝັ້ນສຸກອັນປາສະຈາກອາມິດ ກໍຊື່ວ່າຍັງຖືໝັ້ນຢູ່ ຫຼື ເມື່ອຖືໝັ້ນອະທຸກຂະມະສຸກຂະເວທະນາ ກໍຊື່ວ່າຍັງຖືໝັ້ນຢູ່ ແມ່ນຂໍ້ທີ່ທ່ານຜູ້ນີ້ພິຈາລະນາເຫັນວ່າ "ເຮົາເປັນຜູ້ສະງົບລະງັບ ເປັນຜູ້ດັບ ເປັນຜູ້ບໍ່ມີອຸປາທານ" ນັ້ນ ບັນດິດຮຽກວ່າອຸປາທານຂອງສະມະນະພາມນີ້

ສິ່ງນີ້ນັ້ນຍັງຖືກປັດໄຈປຸງແຕ່ງ ຈຶ່ງຊື່ວ່າຫຍາບ ແລະ ຄວາມດັບຂອງສິ່ງທີ່ຖືກປັດໄຈປຸງແຕ່ງກໍມີຢູ່ ຕະຖາຄົດຮູ້ວ່າ "ຄວາມດັບນີ້ມີຢູ່" ເຫັນອຸບາຍເປັນເຄື່ອງກຳຈັດສິ່ງທີ່ຖືກປັດໄຈປຸງແຕ່ງນັ້ນ ຈຶ່ງລ່ວງພົ້ນສິ່ງທີ່ຖືກປັດໄຈປຸງແຕ່ງນັ້ນໄດ້ ດ້ວຍອາການແບບນີ້

ພິກຂຸທັງຫຼາຍ ກໍສັນຕິວໍນບົດ (ບົດອັນປະເສີດສະງົບ) ບໍ່ມີບົດອື່ນຍິ່ງກວ່າ ທີ່ຕະຖາຄົດຮູ້ແລ້ວນີ້ ຄື ຄວາມຮູ້ເຫດເກີດ ເຫດດັບ ຄຸນ ໂທດ ແລະ ອຸບາຍເປັນເຄື່ອງສະລັດອອກຈາກຜັດສາຍະຕະນະ ໖ ຕາມຄວາມເປັນຈິງ ແລ້ວຈຶ່ງລຸດພົ້ນໄດ້ຍ້ອນບໍ່ຖືໝັ້ນ ສັນຕິວໍຣະບົດທີ່ຕະ ຖາຄົດຮູ້ແລ້ວນີ້ນັ້ນ ຄື ຄວາມຮູ້ເຫດເກີດ ເຫດດັບ ຄຸນ ໂທດ ແລະ ອຸບາຍເປັນເຄື່ອງສະບັດອອກຈາກຜັດສາຍະຕະນະ ໖ ຕາມຄວາມເປັນຈິງ ແລ້ວຈຶ່ງລຸດພົ້ນໄດ້ ຍ້ອນບໍ່ຖືໝັ້ນ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນມີໃຈຍິນດີ ຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າເຈົ້າ ດັ່ງນີ້ແລ

**ປັນຈັດຕະຍະສູດທີ ໘ ຈົບ**

# ໙. ກິນຕິສູດ

## ວ່າດ້ວຍພິກຂຸຄິດແນວໃດໃນພຣະພຸດທະເຈົ້າ

[໓໔] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປ່າຣົກ ອັນເປັນສະຖານທີ່ບວງສວງການບູຊາ ເຂດນະຄອນກຸສິນາຣາຢູ່ໃນບ່ອນນັ້ນເອງ ພຣະຜູ້ມີພຣະພາກເຈົ້າ ໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ທ່ານທັງຫຼາຍມີຄວາມຄິດແນວໃດໃນເຮົາແດ່ບໍວ່າ "ພຣະສະມະນະໂຄດົມສະແດງທຳຍ້ອນເຫດແຫ່ງຈີວອນ ພຣະສະມະນະໂຄດົມສະແດງທຳຍ້ອນເຫດແຫ່ງບິນທະບາດ ພຣະສະມະນະໂຄດົມສະແດງທຳຍ້ອນເຫດແຫ່ງເສນາສະນະ ຫຼື ພຣະສະມະນະໂຄດົມສະແດງທຳຍ້ອນເຫດແຫ່ງພົບນ້ອຍແລະພົບໃຫຍ່ ດ້ວຍອາການແນວນີ້"

ພິກຂຸເຫຼົ່ານັ້ນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍບໍ່ມີຄວາມຄິດໃນພຣະຜູ້ມີພຣະພາກເຈົ້າ ແນວນີ້ເລີຍວ່າ "ພຣະສະມະນະໂຄດົມສະແດງທຳຍ້ອນເຫດແຫ່ງຈີວອນ ພຣະສະມະນະໂຄດົມສະແດງທຳຍ້ອນເຫດແຫ່ງບິນທະບາດ ພຣະສະມະນະໂຄດົມສະແດງທຳຍ້ອນເຫດແຫ່ງເສນາສະນະ ຫຼື ພຣະສະມະນະໂຄດົມສະແດງທຳຍ້ອນເຫດແຫ່ງພົບນ້ອຍແລະພົບໃຫຍ່ ດ້ວຍອາການແນວນີ້"

"ພິກຂຸທັງຫຼາຍ ໄດ້ຂ່າວວ່າທ່ານທັງຫຼາຍບໍ່ມີຄວາມຄິດໃນເຮົາແນວນີ້ເລີຍວ່າ "ພຣະສະມະນະໂຄດົມສະແດງທຳຍ້ອນເຫດແຫ່ງຈີວອນ ພຣະສະມະນະໂຄດົມສະແດງທຳຍ້ອນເຫດແຫ່ງບິນທະບາດ ພຣະສະມະນະໂຄດົມສະແດງທຳຍ້ອນເຫດແຫ່ງເສນາສະນະ ຫຼື ພຣະສະມະນະໂຄດົມ ສະແດງທຳຍ້ອນເຫດແຫ່ງພົບນ້ອຍແລະພົບໃຫຍ່ ດ້ວຍອາການແນວນີ້" ພວກທ່ານທັງຫຼາຍມີຄວາມຄິດແນວໃດໃນເຮົານໍ?"

"ຂ້າພຣະອົງທັງຫຼາຍ ມີຄວາມຄິດໃນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງມີຄວາມອີດູ ສະແຫວງຫາປະໂຫຍດເກື້ອກູນ ອາໄສຄວາມອະນຸເຄາະຈຶ່ງຊົງສະແດງທຳ" ຂ້ານ້ອຍ"

"ພິກຂຸທັງຫຼາຍ ເມື່ອທ່ານທັງຫຼາຍມີຄວາມຄິດແນວນີ້ໃນເຮົາວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງມີຄວາມອີດູ ສະແຫວງຫາປະໂຫຍດເກື້ອກູນ ອາໄສຄວາມອະນຸເຄາະຈຶ່ງຊົງສະແດງທຳ"

[໓໕] ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທຳເຫຼົ່າໃດທີ່ເຮົາສະແດງແລ້ວແກ່ທ່ານທັງຫຼາຍໃນບ່ອນນີ້ດ້ວຍຄວາມຮູ້ຍິ່ງ ຄື ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ທ່ານທັງໝົດເພິ່ງເປັນຜູ້ສາມັກຄີກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ຕັ້ງໃຈສຶກສາໃນທຳເຫຼົ່ານັ້ນ ແຕ່ເມື່ອທ່ານທັງຫຼາຍສາມັກຄີກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນສຶກສາຢູ່ ຈະເພິ່ງມີພິກຂຸ ໒ ພວກ ທີ່ມີວາທະຕ່າງກັນໃນອະພິທຳ[໑]ແດ່

ຖ້າທ່ານທັງຫຼາຍ ມີຄວາມຄິດໃນໂພທິປັກຂິຍະທຳ (ທຳອັນເປັນເຄື່ອງຕັດສະຣູ້) ເຫຼົ່ານັ້ນແນວນີ້ວ່າ "ທ່ານເຫຼົ່ານີ້ ມີຄວາມຂັດແຍ່ງກັນໂດຍອັດຖະ ແລະ ມີຄວາມຂັດແຍ່ງກັນໂດຍພະຍັນຊະນະ"[໑] ທ່ານທັງຫຼາຍເພິ່ງເຂົ້າໃຈບັນດາພິກຂຸເຫຼົ່ານັ້ນວ່າ ພິກຂຸອົງໃດເປັນຜູ້ທີ່ຕັກເຕືອນໄດ້ງ່າຍກວ່າ ຄວນເຂົ້າໄປຫາພິກຂຸອົງນັ້ນແລ້ວກ່າວແນວນີ້ວ່າ "ທ່ານທັງຫຼາຍມີຄວາມຂັດແຍ່ງກັນໂດຍ

ອັດຖະ ແລະ ມີຄວາມຂັດແຍ່ງກັນໂດຍພະຍັນຊະນະ ຂໍທ່ານທັງຫຼາຍຈົ່ງຮູ້ຄວາມຂັດແຍ່ງກັນນີ້ນັ້ນວ່າ "ເປັນຄວາມຂັດແຍ່ງກັນໂດຍອັດຖະ ແລະ ເປັນຄວາມຂັດແຍ່ງກັນໂດຍພະຍັນຊະນະ ທ່ານທັງຫຼາຍຢ່າເຖິງກັບຕ້ອງຜິດຖຽງກັນເລີຍ" ຕໍ່ຈາກນັ້ນ ທ່ານທັງຫຼາຍເພິ່ງເຂົ້າໃຈບັນດາພິກຂຸຜູ້ເປັນຝ່າຍດຽວກັນເຫຼົ່າອື່ນວ່າ ພິກຂຸອົງໃດເປັນຜູ້ທີ່ຕັກເຕືອນໄດ້ງ່າຍກວ່າ ຄວນເຂົ້າໄປຫາພິກຂຸອົງນັ້ນແລ້ວກ່າວແນວນີ້ວ່າ "ທ່ານທັງຫຼາຍ ມີຄວາມຂັດແຍ່ງກັນໂດຍອັດຖະ ແລະ ມີຄວາມຂັດແຍ່ງກັນໂດຍພະຍັນຊະນະ ຂໍທ່ານທັງຫຼາຍຈົ່ງຮູ້ຄວາມຂັດແຍ່ງກັນນີ້ນັ້ນວ່າ "ເປັນຄວາມຂັດແຍ່ງກັນໂດຍອັດຖະ ແລະ ເປັນຄວາມຂັດແຍ່ງກັນໂດຍພະຍັນຊະນະ ຂໍທ່ານທັງຫຼາຍຢ່າເຖິງກັບຕ້ອງຜິດຖຽງກັນເລີຍ"

ທ່ານທັງຫຼາຍ ເພິ່ງຈື່ຂໍ້ທີ່ພິກຂຸເຫຼົ່ານັ້ນຍຶດຖືຜິດໂດຍຄວາມຍຶດຖືຜິດ ເມື່ອຈື່ໄດ້ແລ້ວ ເພິ່ງກ່າວທຳວິໄນ ດ້ວຍອາການແນວນີ້

[໓໖] ຖ້າທ່ານທັງຫຼາຍ ມີຄວາມຄິດໃນໂພທິປັກຂິຍະທຳເຫຼົ່ານັ້ນແນວນີ້ວ່າ "ທ່ານເຫຼົ່ານີ້ມີຄວາມຂັດແຍ່ງກັນໂດຍອັດຖະ ລົງກັນໄດ້ໂດຍພະຍັນຊະນະ" ທ່ານທັງຫຼາຍເພິ່ງເຂົ້າໃຈບັນດາພິກຂຸເຫຼົ່ານັ້ນວ່າ ພິກຂຸອົງໃດເປັນຜູ້ທີ່ຕັກເຕືອນໄດ້ງ່າຍກວ່າ ຄວນເຂົ້າໄປຫາພິກຂຸອົງນັ້ນແລ້ວກ່າວແນວນີ້ວ່າ "ທ່ານທັງຫຼາຍມີຄວາມຂັດແຍ່ງກັນໂດຍອັດຖະ ລົງກັນໄດ້ໂດຍພະຍັນຊະນະ ຂໍທ່ານທັງຫຼາຍ ຈົ່ງຮູ້ຄວາມຂັດແຍ່ງກັນແລະຄວາມລົງກັນນີ້ນັ້ນວ່າ "ເປັນຄວາມຂັດແຍ່ງກັນໂດຍອັດຖະ ລົງກັນໄດ້ໂດຍພະຍັນຊະນະ ທ່ານທັງຫຼາຍຢ່າເຖິງກັບຕ້ອງຜິດຖຽງກັນເລີຍ" ຕໍ່ຈາກນັ້ນ ທ່ານທັງຫຼາຍເພິ່ງເຂົ້າໃຈບັນດາພິກຂຸຜູ້ເປັນຝ່າຍດຽວກັນເຫຼົ່າອື່ນວ່າ ພິກຂຸອົງໃດເປັນຜູ້ທີ່ຕັກເຕືອນໄດ້ໂດຍງ່າຍກວ່າ ຄວນເຂົ້າໄປຫາພິກຂຸອົງນັ້ນແລ້ວກ່າວແນວນີ້ວ່າ "ທ່ານທັງຫຼາຍມີຄວາມຂັດແຍ່ງກັນໂດຍອັດຖະ ລົງກັນໄດ້ໂດຍພະຍັນຊະນະ ຂໍທ່ານທັງຫຼາຍຈົ່ງຮູ້ຄວາມຂັດແຍ່ງກັນແລະຄວາມລົງກັນນີ້ນັ້ນວ່າ "ເປັນຄວາມຂັດແຍ່ງກັນໂດຍອັດຖະ ລົງກັນໄດ້ໂດຍພະຍັນຊະນະ ຂໍທ່ານທັງຫຼາຍຢ່າເຖິງກັບຕ້ອງຜິດຖຽງກັນເລີຍ"

ທ່ານທັງຫຼາຍເພິ່ງຈື່ຂໍ້ທີ່ພິກຂຸເຫຼົ່ານັ້ນຍຶດຖືຜິດໂດຍຄວາມຍຶດຖືຜິດ ເພິ່ງຈື່ຂໍ້ທີ່ພິກຂຸເຫຼົ່ານັ້ນຍຶດຖືຖືກໂດຍຄວາມຍຶດຖືຖືກ ເມື່ອຈື່ໄດ້ແລ້ວ ເພິ່ງກ່າວທຳວິໄນ ດ້ວຍອາການແນວນີ້

[໓໗] ຖ້າທ່ານທັງຫຼາຍ ມີຄວາມຄິດໃນໂພທິປັກຂິຍະທຳເຫຼົ່ານັ້ນແນວນີ້ວ່າ "ທ່ານເຫຼົ່ານີ້ລົງກັນໄດ້ໂດຍອັດຖະ ມີຄວາມຂັດແຍ່ງກັນໂດຍພະຍັນຊະນະ" ທ່ານທັງຫຼາຍເພິ່ງເຂົ້າໃຈບັນດາພິກຂຸເຫຼົ່ານັ້ນວ່າພິກຂຸອົງໃດເປັນຜູ້ທີ່ຕັກເຕືອນໄດ້ງ່າຍກວ່າ ຄວນເຂົ້າໄປຫາພິກສູຮູບນັ້ນແລ້ວກ່າວແນວນີ້ວ່າ "ທ່ານທັງຫຼາຍລົງກັນໄດ້ໂດຍອັດຖະ ມີຄວາມຂັດແຍ່ງກັນໂດຍພະຍັນຊະນະ ຂໍທ່ານທັງຫຼາຍຈົ່ງຮູ້ຄວາມຂັດແຍ່ງກັນນີ້ນັ້ນວ່າ "ລົງກັນໄດ້ໂດຍອັດຖະ

ມີຄວາມຂັດແຍ່ງກັນໂດຍພະຍັນຊະນະ ກໍເລື້ອງພະຍັນຊະນະນີ້ເປັນເລື້ອງເລັກໜ້ອຍ ທ່ານທັງຫຼາຍຢ່າເຖິງກັບຕ້ອງຜິດຖຽງກັນໃນເລື້ອງເລັກໜ້ອຍເລີຍ" ຕໍ່ຈາກນັ້ນທ່ານທັງຫຼາຍເພິ່ງເຂົ້າໃຈບັນດາພິກຂຸຜູ້ເປັນຝ່າຍດຽວກັນເຫຼົ່າອື່ນວ່າ ພິກຂຸອົງໃດເປັນຜູ້ທີ່ຕັກເຕືອນໄດ້ງ່າຍກວ່າ ຄວນເຂົ້າໄປ ຫາພິກຂຸອົງນັ້ນແລ້ວກ່າວແນວນີ້ວ່າ "ທ່ານທັງຫຼາຍ ລົງກັນໄດ້ໂດຍອັດຖະມີຄວາມຂັດແຍ່ງກັນໂດຍພະຍັນຊະນະ ຂໍທ່ານທັງຫຼາຍຈົ່ງຮູ້ຄວາມລົງກັນ ແລະ ຄວາມຂັດແຍ່ງກັນນີ້ນັ້ນວ່າ "ລົງກັນໂດຍອັດຖະ ມີຄວາມຂັດແຍ່ງກັນໂດຍພະຍັນຊະນະ ກໍເລື້ອງພະຍັນຊະນະນີ້ເປັນເລື້ອງເລັກໜ້ອຍ ຂໍທ່ານທັງຫຼາຍຢ່າເຖິງກັບຕ້ອງຜິດຖຽງກັນໃນເລື້ອງເລັກໜ້ອຍເລີຍ"

ທ່ານທັງຫຼາຍ ເພິ່ງຈືຂໍ້ທີ່ພິກຂຸເຫຼົ່ານັ້ນຍຶດຖືຖືກໂດຍຄວາມຍຶດຖືຖືກ ເພິ່ງຈືຂໍ້ທີ່ພິກຂຸເຫຼົ່ານັ້ນຍຶດຖືຜິດໂດຍຄວາມຍຶດຖືຜິດ ເມື່ອຈືໄດ້ແລ້ວ ເພິ່ງກ່າວທຳວິໄນ ດ້ວຍອາການແນວນີ້

[໓໗] ຖ້າທ່ານທັງຫຼາຍ ມີຄວາມຄິດໃນໂພທິປັກຂິຍະທຳເຫຼົ່ານັ້ນແນວນີ້ວ່າ "ທ່ານເຫຼົ່ານີ້ລົງກັນໄດ້ໂດຍອັດຖະ ແລະ ລົງກັນໄດ້ໂດຍພະຍັນຊະນະ" ທ່ານທັງຫຼາຍເພິ່ງເຂົ້າໃຈບັນດາພິກຂຸເຫຼົ່ານັ້ນວ່າ ພິກຂຸອົງໃດເປັນຜູ້ທີ່ຕັກເຕືອນໄດ້ງ່າຍກວ່າ ຄວນເຂົ້າໄປຫາພິກຂຸອົງນັ້ນແລ້ວ ກ່າວແນວນີ້ວ່າ "ທ່ານທັງຫຼາຍລົງກັນໄດ້ໂດຍອັດຖະ ແລະ ລົງກັນໄດ້ໂດຍພະຍັນຊະນະ ຂໍທ່ານທັງຫຼາຍຈົ່ງຮູ້ຄວາມລົງກັນນີ້ນັ້ນວ່າ "ລົງກັນໂດຍອັດຖະແລະລົງກັນໂດຍພະຍັນຊະນະ ຂໍທ່ານທັງຫຼາຍຢ່າເຖິງກັບຕ້ອງຜິດຖຽງກັນເລີຍ" ຕໍ່ຈາກນັ້ນ ທ່ານທັງຫຼາຍເພິ່ງເຂົ້າໃຈບັນດາພິກຂຸຜູ້ເປັນຝ່າຍດຽວກັນເຫຼົ່າອື່ນວ່າ ພິກຂຸອົງໃດເປັນຜູ້ທີ່ຕັກເຕືອນໄດ້ໂດຍງ່າຍກວ່າ ຄວນເຂົ້າໄປຫາພິກຂຸອົງນັ້ນແລ້ວກ່າວແນວນີ້ວ່າ "ທ່ານທັງຫຼາຍລົງກັນໄດ້ໂດຍອັດຖະ ແລະ ລົງກັນໄດ້ໂດຍພະຍັນຊະນະ ຂໍທ່ານທັງຫຼາຍຈົ່ງຮູ້ຄວາມລົງກັນນີ້ນັ້ນວ່າ "ລົງກັນໂດຍອັດຖະ ແລະ ລົງກັນໄດ້ໂດຍພະຍັນຊະນະ ຂໍທ່ານທັງຫຼາຍຢ່າເຖິງກັບຕ້ອງຜິດຖຽງກັນເລີຍ"

ທ່ານທັງຫຼາຍ ເພິ່ງຈືຂໍ້ທີ່ພິກຂຸເຫຼົ່ານັ້ນຍຶດຖືຖືກໂດຍຄວາມຍຶດຖືຖືກ ເມື່ອຈືໄດ້ແລ້ວ ເພິ່ງກ່າວທຳວິໄນ ດ້ວຍອາການແນວນີ້

[໓໘] ພິກຂຸທັງຫຼາຍ ແຕ່ເມື່ອທ່ານທັງຫຼາຍສາມັກຄີກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ສຶກສາຢູ່ ພິກຂຸອົງໃດອົງໜຶ່ງເພິ່ງຕ້ອງອາບັດ ລ່ວງລະເມີດບັນຍັດ ທ່ານທັງຫຼາຍບໍ່ຄວນກ່າວຫາພິກຂຸອົງນັ້ນດ້ວຍຂໍ້ກ່າວຫາໃນເລື້ອງນັ້ນ ເພິ່ງພິຈາຣະນາບຸກຄົນກ່ອນວ່າ "ຄວາມບໍ່ລຳບາກຈັກມີແກ່ເຮົາ ແລະ ຄວາມບໍ່ຂັດໃຈຈັກມີແກ່ບຸກຄົນອື່ນ ຍ້ອນບຸກຄົນອື່ນເປັນຜູ້ບໍ່ໂກດ ບໍ່ມັດໂກດ ບໍ່ດື້ດ້ານ ສະລະຄືນໄດ້ງ່າຍ ແລະ ເຮົາສາມາດຈະໃຫ້ເຂົາອອກຈາກອະກຸສົນແລ້ວໃຫ້ດຳລົງຢູ່ໃນກຸສົນໄດ້ ດ້ວຍອາການແນວນີ້" ຖ້າທ່ານທັງຫຼາຍມີຄວາມເຫັນແນວນີ້ ກໍຄວນກ່າວຫາ

ອັນໜຶ່ງ ຖ້າທ່ານທັງຫຼາຍມີຄວາມເຫັນແນວນີ້ວ່າ "ຄວາມບໍ່ລຳບາກຈັກມີແກ່ເຮົາ ແລະ

ຄວາມຂັດໃຈຈັກມີແກ່ບຸກຄົນອື່ນ ຍ້ອນບຸກຄົນອື່ນເປັນຜູ້ມັກໂກດ ມັດໂກດ ດື້ດ້ານ ສະລະຄືນໄດ້ງ່າຍ ແລະເຮົາສາມາດຈະໃຫ້ເຂົາອອກຈາກອະກຸສົນແລ້ວໃຫ້ດຳລົງຢູ່ໃນກຸສົນໄດ້ ກໍເລື້ອງຄວາມຂັດໃຈຂອງບຸກຄົນອື່ນນີ້ເປັນເລື້ອງເລັກໜ້ອຍ ສ່ວນເລື້ອງທີ່ເຮົາສາມາດຈະໃຫ້ເຂົາອອກຈາກອະກຸສົນແລ້ວໃຫ້ດຳລົງຢູ່ໃນກຸສົນນັ້ນ ເປັນເລື້ອງໃຫຍ່ກວ່າ" ຖ້າທ່ານທັງຫຼາຍມີຄວາມເຫັນແບບນີ້ ກໍຄວນກ່າວຫາ

ອັນໜຶ່ງ ຖ້າທ່ານທັງຫຼາຍມີຄວາມເຫັນແບບນີ້ວ່າ "ຄວາມລຳບາກຈັກມີແກ່ເຮົາ ແລະຄວາມບໍ່ຂັດໃຈຈັກມີແກ່ບຸກຄົນອື່ນ ຍ້ອນບຸກຄົນອື່ນເປັນຜູ້ບໍ່ໂກດ ບໍ່ມັດໂກດ ດື້ດ້ານ ສະລະຄືນໄດ້ຍາກ ແລະ ເຮົາສາມາດຈະໃຫ້ເຂົາອອກຈາກອະກຸສົນແລ້ວໃຫ້ດຳລົງຢູ່ໃນກຸສົນໄດ້ ກໍເລື້ອງຄວາມລຳບາກຂອງເຮົານີ້ເປັນເລື້ອງເລັກໜ້ອຍ ສ່ວນເລື້ອງທີ່ເຮົາສາມາດຈະໃຫ້ເຂົາອອກຈາກອະກຸສົນແລ້ວໃຫ້ດຳລົງຢູ່ໃນກຸສົນໄດ້ນັ້ນ ເປັນເລື້ອງໃຫຍ່ກວ່າ" ຖ້າທ່ານທັງຫຼາຍມີຄວາມເຫັນແບບນີ້ ກໍຄວນກ່າວຫາ

ອັນໜຶ່ງ ຖ້າທ່ານທັງຫຼາຍມີຄວາມເຫັນແບບນີ້ວ່າ "ຄວາມລຳບາກຈັກມີແກ່ເຮົາດ້ວຍຄວາມຂັດໃຈຈັກມີແກ່ບຸກຄົນອື່ນດ້ວຍ ຍ້ອນບຸກຄົນອື່ນເປັນຜູ້ມັກໂກດ ມັດໂກດ ດື້ດ້ານ ສະລະຄືນໄດ້ຍາກ ແລະເຮົາສາມາດຈະໃຫ້ເຂົາອອກຈາກອະກຸສົນແລ້ວໃຫ້ດຳລົງຢູ່ໃນກຸສົນໄດ້ ກໍເລື້ອງຄວາມລຳບາກຂອງເຮົາແລະຄວາມຂັດໃຈຂອງບຸກຄົນອື່ນນີ້ເປັນເລື້ອງເລັກໜ້ອຍ ສ່ວນເລື້ອງທີ່ເຮົາສາມາດຈະໃຫ້ເຂົາອອກຈາກອະກຸສົນແລ້ວໃຫ້ດຳລົງຢູ່ໃນກຸສົນໄດ້ນັ້ນ ເປັນເລື້ອງໃຫຍ່ກວ່າ" ຖ້າທ່ານທັງຫຼາຍມີຄວາມເຫັນແບບນີ້ ກໍຄວນກ່າວຫາ

ພິກຂຸທັງຫຼາຍ ແຕ່ຖ້າທ່ານທັງຫຼາຍມີຄວາມເຫັນແບບນີ້ວ່າ "ຄວາມລຳບາກຈັກມີແກ່ເຮົາດ້ວຍຄວາມຂັດໃຈຈັກມີແກ່ບຸກຄົນອື່ນດ້ວຍ ຍ້ອນບຸກຄົນອື່ນເປັນຜູ້ມັກໂກດ ມັດໂກດ ດື້ດ້ານ ສະລະຄືນໄດ້ຍາກ ແລະ ເຮົາກໍບໍ່ສາມາດຈະໃຫ້ເຂົາອອກຈາກອົກສຸນແລ້ວໃຫ້ດຳລົງຢູ່ໃນກຸສົນໄດ້" ທ່ານທັງຫຼາຍ ກໍຢ່າເພິ່ງດູໝິ່ນຄວາມວາງເສີຍໃນບຸກຄົນແບບນີ້

[໔໐] ພິກຂຸທັງຫຼາຍ ແຕ່ເມື່ອທ່ານທັງຫຼາຍສາມັກຄີກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ສຶກສາຢູ່ ເພິ່ງເກີດການເວົ້າຍຸແຍ່ກັນ ມີຄວາມເຫັນແຕກແຍກກັນ ມັດໃຈເຈັບ ບໍ່ເຊື່ອຖືກັນ ບໍ່ຍິນດີຕໍ່ກັນໄດ້ ທ່ານທັງຫຼາຍເພິ່ງເຂົ້າໃຈບັນດາພິກຂຸຜູ້ເປັນຝ່າຍດຽວກັນໃນບ່ອນນັ້ນວ່າ ພິກຂຸອົງໃດເປັນຜູ້ທີ່ຕັກເຕືອນໄດ້ງ່າຍກວ່າ ຄວນເຂົ້າໄປຫາພິກຂຸອົງນັ້ນແລ້ວກ່າວແບບນີ້ວ່າ "ທ່ານທັງຫຼາຍພຣະສະມະນະເມື່ອຊົງຮູ້ເລື້ອງທີ່ເຮົາສາມັກຄີກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ສຶກສາຢູ່ ເພິ່ງເກີດການເວົ້າຍຸແຍ່ກັນ ມີຄວາມເຫັນແຕກແຍກກັນ ມັດໃຈເຈັບ ບໍ່ເຊື່ອຖືກັນ ບໍ່ຍິນດີຕໍ່ກັນນັ້ນ ຈະຊົງຕຳໜິບໍ່?"

ພິກຂຸ ເມື່ອຈະຊີ້ແຈ່ງໂດຍຖືກຕ້ອງ ເພິ່ງຊີ້ແຈ່ງແນວນີ້ວ່າ "ທ່ານທັງຫຼາຍ ພຣະສະມະນະ ເມື່ອຊົງຮູ້ເລື້ອງທີ່ເຮົາທັງຫຼາຍສາມັກຄີກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ສຶກສາຢູ່ ເພິ່ງເກີດການເວົ້າຍຸແຍ່ກັນ ມີຄວາມເຫັນແຕກແຍກກັນ ມັດໃຈເຈັບ ບໍ່ເຊື່ອຖືກັນ ບໍ່ຍິນດີຕໍ່ກັນນັ້ນ ຈະຊົງຕຳໜິໄດ້" ກໍພິກຂຸອື່ນເພິ່ງຖາມທ່ານວ່າ "ທ່ານທັງຫຼາຍ ພິກຂຸບໍ່ລະທຳນີ້ແລ້ວ ຈະເພິ່ງເຮັດນິບພານໃຫ້ແຈ້ງໄດ້ຫຼືບໍ່?" ພິກຂຸເມື່ອຈະຊີ້ແຈ່ງໂດຍຖືກຕ້ອງ ເພິ່ງຊີ້ແຈ່ງແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸບໍ່ລະທຳນີ້ແລ້ວ ເພິ່ງເຮັດນິບພານໃຫ້ແຈ້ງບໍ່ໄດ້"

ຕໍ່ຈາກນັ້ນ ທ່ານທັງຫຼາຍເພິ່ງເຂົ້າໃຈບັນດາພິກຂຸຜູ້ເປັນຝ່າຍດຽວກັນເຫຼົ່າອື່ນວ່າ ພິກຂຸອົງໃດເປັນຜູ້ທີ່ຕັກເຕືອນໄດ້ງ່າຍກວ່າ ຄວນເຂົ້າໄປຫາພິກຂຸອົງນັ້ນແລ້ວກ່າວແນວນີ້ ວ່າ

"ທ່ານທັງຫຼາຍ ພຣະສະມະນະເມື່ອຊົງຮູ້ເລື້ອງທີ່ເຮົາທັງຫຼາຍສາມັກຄີກັນ ຮ່ວມໃຈກັນບໍ່ຜິດຖຽງກັນ ສຶກສາຢູ່ ເພິ່ງເກີດການເວົ້າຍຸແຍ່ກັນ ມີຄວາມເຫັນແຕກແຍກກັນ ມັດໃຈເຈັບ ບໍ່ເຊື່ອຖືກັນ ບໍ່ຍິນດີຕໍ່ກັນນັ້ນ ຈະຊົງຕຳໜິບໍ່" ພິກຂຸເມື່ອຈະຊີ້ແຈ່ງໂດຍຖືກຕ້ອງ ເພິ່ງຊີ້ແຈ່ງແນວນີ້ວ່າ "ທ່ານທັງຫຼາຍ ພຣະສະມະນະເມື່ອຊົງຮູ້ເລື້ອງທີ່ເຮົາທັງຫຼາຍສາມັກຄີກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ສຶກສາຢູ່ ເພິ່ງເກີດການເວົ້າຍຸແຍ່ກັນ ມີຄວາມເຫັນແຕກແຍກກັນ ມັດໃຈເຈັບ ບໍ່ເຊື່ອຖືກັນ ບໍ່ຍິນດີຕໍ່ກັນນັ້ນ ຈະຊົງຕຳໜິໄດ້" ກໍພິກຂຸອື່ນຈະເພິ່ງຖາມທ່ານວ່າ "ທ່ານທັງຫຼາຍ ພິກຂຸບໍ່ລະທຳນີ້ແລ້ວ ຈະເພິ່ງເຮັດນິບພານໃຫ້ແຈ້ງໄດ້ຫຼືບໍ່?" ພິກຂຸເມື່ອຈະຊີ້ແຈ່ງໂດຍຖືກຕ້ອງ ເພິ່ງຊີ້ແຈ່ງແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸບໍ່ລະທຳນີ້ແລ້ວ ເພິ່ງເຮັດນິບພານໃຫ້ແຈ້ງບໍ່ໄດ້"

ພິກຂຸທັງຫຼາຍ ຖ້າພິກຂຸເຫຼົ່າອື່ນເພິ່ງຖາມພິກຂຸນັ້ນແນວນີ້ວ່າ "ທ່ານຜູ້ມີອາຍຸ ພິກຂຸເຫຼົ່ານີ້ຂອງເຮົາທັງຫຼາຍ ອັນທ່ານໃຫ້ອອກຈາກອະກຸສົນ ໃຫ້ດຳລົງຢູ່ໃນກຸສົນແລ້ວຫຼືບໍ່?" ພິກຂຸເມື່ອຈະຊີ້ແຈ່ງໂດຍຖືກຕ້ອງ ເພິ່ງຊີ້ແຈ່ງແນວນີ້ວ່າ "ທ່ານທັງຫຼາຍ ໃນເລື້ອງນີ້ຂ້າພະເຈົ້າເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳແກ່ຂ້າພະເຈົ້າ ຂ້າພະເຈົ້າຟັງທຳຂອງພຣະອົງແລ້ວໄດ້ບອກແກ່ພິກຂຸເຫຼົ່ານັ້ນ ພິກຂຸເຫຼົ່ານັ້ນຟັງທຳນັ້ນແລ້ວອອກຈາກອະກຸສົນ ດຳລົງຢູ່ໃນກຸສົນໄດ້ແລ້ວ" ພິກຂຸເມື່ອຊີ້ແຈ່ງແນວນີ້ ຊື່ວ່າບໍ່ຍົກຕົນ ບໍ່ຂົ່ມບຸກຄົນອື່ນ ແລະ ຊື່ວ່າຊີ້ແຈ່ງແນວສົມເຫດສົມຜົນ ບໍ່ມີເລີຍທີ່ຄຳກ່າວເຊັ່ນນັ້ນແລະຄຳທີ່ກ່າວຕໍ່ ໆ ກັນມາຈະເປັນເຫດໃຫ້ຖືກຕຳໜິໄດ້"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ກິນຕິສູດທີ ໓ ຈົບ**

# ໔. ສາມະຄາມະສູດ

## ວ່າດ້ວຍເຫດການໃນໝູ່ບ້ານສາມະຄາມ

[໔໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໝູ່ບ້ານສາມະຄາມ ແຄວ້ນສັກກະ ສະໄໝນັ້ນແລ ນິຄົນ ນາຕະບຸດໄດ້ເຖິງແກ່ກຳບໍ່ດົນ ທີ່ນະຄອນປາວາ ຍ້ອນການເຖິງແກ່ກຳຂອງນິຄົນນາຕະບຸດນັ້ນ ນິຄົນທັງຫຼາຍໄດ້ແຕກກັນເປັນ ໒ ຝ່າຍ ຕ່າງບາດໝາງກັນ ຜິດຖຽງຜິດຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ວ່າ

"ທ່ານບໍ່ຮູ້ທົ່ວເຖິງທຳວິໄນນີ້ ແຕ່ເຮົາຮູ້ທົ່ວເຖິງ ທ່ານຈັກຮູ້ທົ່ວເຖິງທຳວິໄນນີ້ໄດ້ແນວໃດ ທ່ານປະຕິບັດຜິດ ແຕ່ເຮົາປະຕິບັດຖືກ ຄຳເວົ້າຂອງເຮົາມີປະໂຫຍດ ແຕ່ຄຳເວົ້າຂອງທ່ານບໍ່ມີປະໂຫຍດ ຄຳທີ່ຄວນເວົ້າກ່ອນທ່ານກັບເວົ້າພາຍຫຼັງ ຄຳທີ່ຄວນເວົ້າພາຍຫຼັງທ່ານກັບເວົ້າ ກ່ອນ ເລື້ອງທີ່ທ່ານເຄີຍຊິນໄດ້ຜັນແປໄປແລ້ວ ເຮົາຈັບຜິດຄຳເວົ້າຂອງທ່ານໄດ້ແລ້ວ ເຮົາຂົ່ມທ່ານໄດ້ແລ້ວ ຖ້າທ່ານມີຄວາມສາມາດກໍຈົ່ງຫາທາງແກ້ຄຳເວົ້າ ຫຼື ປົດເປື້ອງຕົນໃຫ້ພົ້ນຜິດເທີ້ນ"

ນິຄົນເຫຼົ່ານັ້ນ ຜິດຖຽງກັນແລ້ວ ເຫັນຈະມີແຕ່ການຂ້າກັນແນວດຽວທໍ່ນັ້ນທີ່ຈະລຸກລາມໄປໃນໝູ່ສິດຂອງນິຄົນ ນາຕະບຸດ ແມ່ນພວກສາວົກຂອງນິຄົນ ນາຕະບຸດຜູ້ເປັນຄະຫັດ ນຸ່ງຂາວຫົ່ມຂາວ ກໍເປັນຜູ້ເບື່ອໜ່າຍ ຄາຍຄວາມຮັກ ຮູ້ສຶກທໍ້ທໍ້ໃນໝູ່ສິດຂອງນິຄົນ ນາຕະບຸດ ທັງນີ້ ຍ້ອນທຳວິໄນທີ່ນິຄົນ ນາຕະບຸດກ່າວໄວ້ບໍ່ດີ ປະກາດໄວ້ບໍ່ດີ ບໍ່ເປັນເຄື່ອງນຳອອກຈາກທຸກ ບໍ່ເປັນໄປເພື່ອຄວາມສະຫງົບລະງັບ ເປັນທຳວິໄນທີ່ຜູ້ບໍ່ແມ່ນພຣະສຳມາສຳພຸດທະເຈົ້າປະກາດໄວ້ ເປັນທຳວິໄນທີ່ມີທີ່ພຳນັກຖືກທຳລາຍສາແລ້ວ ເປັນທຳວິໄນທີ່ບໍ່ມີທີ່ເພິ່ງອາໄສ

[໔໒] ຄັ້ງນັ້ນ ພຣະຈຸນທະສະມະນຸດເທດຈຳພັນສາຢູ່ໃນນະຄອນປາວາໄດ້ເຂົ້າໄປຫາທ່ານພຣະອານົນເຖິງໝູ່ບ້ານສາມະຄາມ ຂາບແລ້ວ ນັ່ງຢູ່ບ່ອນສົມຄວນ ໄດ້ກ່າວກັບທ່ານພຣະອານົນ ວ່າ

"ທ່ານຜູ້ຈະເລີນ ນິຄົນ ນາຕະບຸດໄດ້ເຖິງແກ່ກຳບໍ່ດົນທີ່ນະຄອນປາວາ ຍ້ອນການເຖິງແກ່ກຳຂອງນິຄົນ ນາຕະບຸດນັ້ນ ນິຄົນທັງຫຼາຍໄດ້ແຕກກັນເປັນ ໒ ຝ່າຍ ຯລຯ ເປັນທຳວິໄນທີ່ມີທີ່ພຳນັກຖືກທຳລາຍແລ້ວ ເປັນທຳວິໄນທີ່ບໍ່ມີທີ່ເພິ່ງອາໄສ"

ເມື່ອພຣະຈຸນທະສະມະນຸດເທດກ່າວແນວນີ້ແລ້ວ ທ່ານພຣະອານົນໄດ້ກ່າວວ່າ "ທ່ານຈຸນ

ທະ ເລື້ອງນີ້ ມີເຫດພໍຈະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າໄດ້ ມາເທີ້ນທ່ານຈຸນທະ ເຮົາທັງສອງຈັກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ແລ້ວຂາບທູນເລື້ອງນີ້ແດ່ ພຣະຜູ້ມີພຣະພາກເຈົ້າ"

ເມື່ອແລ້ວ ພຣະຈຸນທະສະມະນຸດເທດຮັບຄຳທ່ານພຣະອານົນແລ້ວ

ຄັ້ງນັ້ນ ທ່ານພຣະອານົນ ແລະ ພຣະຈຸນທະສະມະນຸດເທດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວ ນັ່ງຢູ່ບ່ອນສົມຄວນ ທ່ານພຣະອານົນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຈຸນທະສະມະນຸດເທດນີ້ກ່າວແນວນີ້ວ່າ "ນີຄົນ ນາຕະບຸດໄດ້ເຖິງແກ່ກຳບໍ່ຄົນທີ່ນະຄອນປາວາ ຍ້ອນການເຖິງແກ່ກຳຂອງນີຄົນ ນາຕະບຸດນັ້ນ ນີຄົນທັງຫຼາຍ ໄດ້ແຕກກັນເປັນ ໒ ຝ່າຍ ຕ່າງໝາງໃຈກັນ ຜິດກັນ ຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ວ່າ "ທ່ານບໍ່ຮູ້ທົ່ວເຖິງທຳວິໄນນີ້ ແຕ່ເຮົາຮູ້ທົ່ວເຖິງ ຯລຯ ເປັນທຳວິໄນທີ່ມີທີ່ພຳນັກຖືກທຳລາຍສາແລ້ວ ເປັນທຳວິໄນທີ່ບໍ່ມີທີ່ເພິ່ງອາໄສ"

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຄິດແນວນີ້ວ່າ "ສະໄໝເມື່ອພຣະຜູ້ມີພຣະພາກເຈົ້າສະເດັດລ່ວງລັບໄປ ຄວາມຜິດຖຽງຢ່າໄດ້ເກີດຂຶ້ນໃນສົງເລີຍ ຍ້ອນຄວາມຜິດຖຽງນັ້ນ ເປັນໄປເພື່ອບໍ່ແມ່ນເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາ ແລະ ມະນຸດທັງຫຼາຍ"

[໔໙] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ?

ຄື ທຳທັງຫຼາຍ ຄື ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ທີ່ເຮົາສະແດງແລ້ວແກ່ທ່ານທັງຫຼາຍດ້ວຍຄວາມຮູ້ຍິ່ງ ທ່ານເຫັນພິກຂຸຂອງເຮົາແມ່ນ ໒ ອົງ ມີວາທະຕ່າງກັນໃນທຳເຫຼົ່ານີ້ແດ່ບໍ?"

ທ່ານພຣະອານົນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ທຳທັງຫຼາຍ ຄື ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງແລ້ວແກ່ຂ້າພຣະອົງທັງຫຼາຍດ້ວຍຄວາມຮູ້ຍິ່ງ ຂ້າພຣະອົງຍັງບໍ່ເຫັນພິກຂຸແມ່ນ ໒ ອົງ ມີວາທະຕ່າງກັນໃນທຳເຫຼົ່ານີ້ເລີຍ ແຕ່ມີບຸກຄົນທັງຫຼາຍຜູ້ອາໄສພຣະຜູ້ມີພຣະພາກເຈົ້າຢູ່ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດລ່ວງລັບໄປ ເພິ່ງກໍ່ການຜິດຖຽງໃຫ້ເກີດຂຶ້ນໃນສົງ ຍ້ອນວ່າ ອາຊີວະອັນເຄັ່ງຄັດ ຫຼື ປາຕິໂມກອັນເຄັ່ງຄັດ ການຜິດຖຽງນັ້ນເພິ່ງເປັນໄປເພື່ອບໍ່ແມ່ນເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາ ແລະ ມະນຸດທັງຫຼາຍ ຂ້ານ້ອຍ"

“ອານົນ ການຜິດຖຽງທີ່ເກີດຍ້ອນອາຊີວະອັນເຄັ່ງຄັດ ຫຼື ປາຕິໂມກອັນເຄັ່ງຄັດນັ້ນເປັນເລື້ອງເລັກໜ້ອຍ ຄວາມຈິງ ການຜິດຖຽງໃດເມື່ອເກີດໃນສົງເພິ່ງເກີດຍ້ອນມັກ ຫຼື ປະຕິປະທາການຜິດຖຽງນັ້ນ ເພິ່ງເປັນໄປເພື່ອບໍ່ແມ່ນເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາແລະມະນຸດທັງຫຼາຍ”

## ມູນເຫດແຫ່ງການຜິດຖຽງ

[໔໔] ອານົນ ມູນເຫດແຫ່ງການຜິດຖຽງ ໖ ປະການນີ້

ມູນເຫດແຫ່ງການຜິດຖຽງ ໖ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມັກໂກດ ມີຄວາມຜູກໂກດ ພິກຂຸໃດເປັນຜູ້ມັກໂກດ ຜູກໂກດໄວ້ ພິກຂຸນັ້ນບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງແມ່ນໃນພຣະສາດສະດາ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງແມ່ນໃນພຣະທຳ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງແມ່ນໃນພຣະສົງຢູ່ ແລະ ບໍ່ເຮັດສິກຂາໃຫ້ບໍລິບູນ ອານົນ ພິກຂຸ ໃດບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສາດສະດາ ຯລຯ ໃນພຣະທຳ ຯລຯ ໃນພຣະສົງ ແລະ ບໍ່ເຮັດສິກຂາໃຫ້ບໍລິບູນ

ພິກຂຸນັ້ນ ຍ່ອມກໍ່ການຜິດຖຽງໃຫ້ເກີດຂຶ້ນໃນສົງ ເຊິ່ງເປັນໄປເພື່ອບໍ່ແມ່ນເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາແລະມະນຸດທັງຫຼາຍ ຖ້າທ່ານທັງຫຼາຍ ພິຈາລະນາເຫັນມູນເຫດແຫ່ງການຜິດຖຽງແນວນີ້ພາຍໃນຫຼືພາຍນອກ ທ່ານທັງຫຼາຍ ເພິ່ງພະຍາຍາມເພື່ອລະມູນເຫດແຫ່ງການຜິດຖຽງທີ່ເປັນບາບພາຍໃນ ຫຼື ພາຍນອກນັ້ນ ຖ້າທ່ານທັງຫຼາຍ ບໍ່ພິຈາລະນາເຫັນມູນເຫດແຫ່ງການຜິດຖຽງແນວນີ້ພາຍໃນ ຫຼື ພາຍນອກ ທ່ານທັງຫຼາຍເພິ່ງປະຕິບັດເພື່ອໃຫ້ມູນເຫດແຫ່ງການຜິດຖຽງທີ່ເປັນບາບນັ້ນ ບໍ່ຍຶດເຍື້ອແກ່ຍາວຕໍ່ໄປ ການລະມູນເຫດແຫ່ງການຜິດຖຽງທີ່ເປັນບາບນັ້ນ ຍ່ອມມີໄດ້ ແລະ ມູນເຫດແຫ່ງການຜິດຖຽງທີ່ເປັນບາບນັ້ນ ຍ່ອມບໍ່ຍຶດເຍື້ອແກ່ຍາວຕໍ່ໄປດ້ວຍອາການແນວນີ້

[໔໕] ໒. ເປັນຜູ້ລົບຫລູ່ ເປັນຜູ້ຕີສະເໝີ ຯລຯ
໓. ເປັນຜູ້ຣິດສະຫຍາ ມີຄວາມຂີ້ຖີ່ ຯລຯ

໔. ເປັນຜູ້ໂອ້ອວດ ມີມານຍາ ຯລຯ

໕. ເປັນຜູ້ມີຄວາມປາຖະໜາຊົ່ວ ເປັນມິດສາທິດຖິ ຯລຯ

໖. ເປັນຜູ້ຍຶດໝັ້ນທິດຖິຂອງຕົນ ເປັນຄົນລື່ນຄວາມ ສະລະສິ່ງທີ່ຕົນຍຶດໝັ້ນໄດ້ຍາກ ອານົນ ພິກຂຸໃດ ເປັນຜູ້ຍຶດໝັ້ນທິດຖິຂອງຕົນ ເປັນຄົນລື່ນຄວາມ ສະລະສິ່ງທີ່ຕົນຍຶດໝັ້ນໄດ້ຍາກ ພິກຂຸນັ້ນຍ່ອມບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງແມ່ນໃນພຣະສາດສະດາ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງແມ່ນໃນພຣະທຳ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງແມ່ນໃນພຣະສົງຢູ່ ແລະບໍ່ເຮັດສິກຂາໃຫ້ບໍລິບູນ ອານົນ ພິກຂຸໃດບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສາດສະດາຯລຯ ໃນພຣະທຳຯລຯ ໃນພຣະສົງ ແລະ ບໍ່ເຮັດສິກຂາໃຫ້ບໍລິບູນ

ພິກຂຸນັ້ນ ຍ່ອມກໍ່ການຜິດຖຽງໃຫ້ເກີດຂຶ້ນໃນສົງ ເຊິ່ງເປັນໄປເພື່ອບໍ່ແມ່ນເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາແລະມະນຸດທັງຫຼາຍ ອານົນ ຖ້າທ່ານທັງຫຼາຍ ພິຈາລະນາເຫັນມູນເຫດແຫ່ງການຜິດຖຽງແນວນີ້ທັງພາຍໃນ ຫຼື ພາຍນອກ ທ່ານທັງຫຼາຍ ເພິ່ງພະຍາຍາມເພື່ອລະມູນເຫດແຫ່ງການຜິດຖຽງທີ່ເປັນບາບນັ້ນແລທັງພາຍໃນ ຫຼື ພາຍນອກນັ້ນ ຖ້າທ່ານທັງຫຼາຍບໍ່ພິຈາລະນາເຫັນມູນເຫດແຫ່ງການຜິດຖຽງແນວນີ້ທັງພາຍໃນ ຫຼື ພາຍນອກທ່ານທັງຫຼາຍເພິ່ງປະຕິບັດເພື່ອໃຫ້ມູນເຫດແຫ່ງການຜິດຖຽງທີ່ເປັນບາບນັ້ນແລບໍ່ຍືດເຍື້ອຕໍ່ໄປ ການລະມູນເຫດແຫ່ງການຜິດຖຽງ ທີ່ເປັນບາບນັ້ນແລຍ່ອມມີໄດ້ ແລະ ມູນເຫດແຫ່ງການຜິດຖຽງ ທີ່ເປັນບາບນັ້ນ ຍ່ອມບໍ່ຍືດເຍື້ອແກ່ຍາວຕໍ່ໄປ ດ້ວຍອາການແນວນີ້

ອານົນ ມູນເຫດແຫ່ງການຜິດຖຽງມີ ໖ ປະການນີ້ແລ

## ອະທິກອນແລະວິທີລະງັບອະທິກອນ

[໔໖] ອານົນ ອະທິກອນ ໔ ປະການນີ້

ອະທິກອນ ໔ ປະການ ອັນໃດແດ່ ຄື

໑. ວິວາທາທິກອນ ໒. ອະນຸວາທາທິກອນ

໓. ອາປັດຕາທິກອນ ໔. ກິດຈາທິກອນ

ອະທິກອນມີ ໔ ປະການນີ້ແລ

ອະທິກະຣະນະສະມະຖະ ໗ ປະການນີ້ ຄື

໑. ສຳມຸຂາວິໄນ ໔. ສະຕິວິໄນ

໓. ອະມູລະຫະວິໄນ ໔. ປະຕິນຍາຕະກະຣະນະ

໕. ເຍພຸຍຍະສິກາ ໖. ຕັດສະປາປິຍະສິກາ

໗. ຕິນະວັດຖາຣະກະ

ອັນສົງເພິ່ງໃຫ້ ເພື່ອສະງົບລະງັບອະທິກອນທີ່ເກີດຂື້ນແລ້ວ ໆ

[໔໗] ສຳມຸຂາວິໄນ ເປັນແນວໃດ?

ຄື ພິກຂຸທັງຫຼາຍ ໃນທຳວິໄນນີ້ຍ່ອມຜິດຖຽງກັນວ່າ “ນີ້ເປັນທຳແດ່ ນີ້ບໍ່ເປັນທຳແດ່ ນີ້ເປັນວິໄນແດ່ ນີ້ບໍ່ເປັນວິໄນແດ່” ພິກຂຸເຫຼົ່ານັ້ນທັງໝົດ ເພິ່ງພ້ອມພຽງກັນປະຊຸມ ເມື່ອປະຊຸມແລ້ວ ເພິ່ງພິຈາລະນາທຳເນຕິ ເມື່ອພິຈາລະນາແລ້ວ ເພິ່ງໃຫ້ອະທິກອນນັ້ນລະງັບໂດຍອາການທີ່ເລື້ອງໃນທຳເນຕິນັ້ນລົງກັນໄດ້

ອານິນ ສຳມຸຂາວິໄນ ເປັນແນວນີ້ ການລະງັບອະທິກອນບາງຢ່າງໃນທຳວິໄນນີ້ ຍ່ອມມີໄດ້ດ້ວຍສຳມຸຂາວິໄນແນວນີ້

[໔໘] ເຍພຸຍຍະສິກາ ເປັນແນວໃດ?

ຄື ພິກຂຸເຫຼົ່ານັ້ນ ບໍ່ອາດລະງັບອະທິກອນນັ້ນໃນອາວາດນັ້ນໄດ້ ຈຶ່ງພາກັນໄປສູ່ອາວາດທີ່ມີພິກຂຸຫຼາຍກວ່າ ພິກຂຸເຫຼົ່ານັ້ນທັງໝົດ ເພິ່ງພ້ອມພຽງກັນປະຊຸມໃນອາວາດນັ້ນ ເມື່ອປະຊຸມແລ້ວ ເພິ່ງພິຈາລະນາທຳເນຕິ ເມື່ອພິຈາລະນາແລ້ວ ເພິ່ງໃຫ້ອະທິກອນນັ້ນລະງັບໂດຍອາການທີ່ເລື້ອງໃນທຳເນຕິນັ້ນລົງກັນໄດ້

ອານິນ ເຍພຸຍຍະສິກາ ເປັນແນວນີ້ ການລະງັບອະທິກອນບາງຢ່າງໃນທຳວິໄນນີ້ ຍ່ອມມີໄດ້ດ້ວຍເຍພຸຍຍະຊິກາແນວນີ້

[໔໙] ສະຕິວິໄນ ເປັນແນວໃດ?

ຄື ພິກຂຸທັງຫຼາຍໃນທຳວິໄນນີ້ ຍ່ອມກ່າວຫາພິກຂຸດ້ວຍອາບັດໜັກປານນີ້ ຄື ປາຣາຊິກ ຫຼື ໃກ້ຄຽງປາຣາຊິກວ່າ “ທ່ານຜູ້ມີອາຍຸຣະນຶກໄດ້ບໍວ່າ “ທ່ານຕ້ອງອາບັດໜັກປານນີ້ ຄື ປາຣາຊິກ ຫຼື ໃກ້ຄຽງປາຣາຊິກ” ພິກຂຸນັ້ນ ກ່າວແນວນີ້ວ່າ “ທ່ານທັງຫຼາຍ ຂ້າພະເຈົ້າຣະນຶກບໍ່ໄດ້ເລີຍ

ວ່າ “ຂ້າພະເຈົ້າຕ້ອງອາບັດໜັກປານນີ້ ຄື ປາຣາຊິກ ຫຼື ໃກ້ຄຽງປາຣາຊິກ” ເມື່ອເປັນແນວນີ້ ສົງເພິ່ງໃຫ້ສະຕິວິໄນແກ່ພິກຂຸນັ້ນ

ອານົນ ສະຕິວິໄນ ເປັນແນວນີ້ ການລະງັບອະທິກອນບາງຢ່າງໃນທຳວິໄນນີ້ ຍ່ອມມີໄດ້ດ້ວຍສະຕິວິໄນແນວນີ້

[໕໐] ອະມູລະຫະວິໄນ ເປັນແນວໃດ?

ຄື ພິກຂຸທັງຫຼາຍ ໃນທຳວິໄນນີ້ ຍ່ອມກ່າວຫາພິກຂຸດ້ວຍອາບັດໜັກປານນີ້ ຄື ປາຣາຊິກ ຫຼື ໃກ້ຄຽງປາຣາຊິກວ່າ “ທ່ານຜູ້ມີອາຍຸຣະນຶກໄດ້ບໍວ່າ “ທ່ານຕ້ອງອາບັດໜັກປານນີ້ ຄື ປາຣາຊິກ ຫຼື ໃກ້ຄຽງປາຣາຊິກ”

ພິກຂຸນັ້ນກ່າວແນວນີ້ວ່າ “ທ່ານທັງຫຼາຍ ຂ້າພະເຈົ້າຣະນຶກບໍ່ໄດ້ເລີຍວ່າ ຂ້າພະເຈົ້າຕ້ອງອາບັດໜັກປານນີ້ ຄື ປາຣາຊິກ ຫຼືໃກ້ຄຽງປາຣາຊິກ” ພິກຂຸຜູ້ເປັນໂຈດນັ້ນເພິ່ງປອບໂຍນທ່ານຜູ້ກ່າວແກ້ໂຕວ່າ “ຖ້າຈັ່ງຊັ້ນແລ້ວ ທ່ານຈົ່ງຕອງເບິ່ງໃຫ້ດີ ຖ້າທ່ານຣະນຶກໄດ້ວ່າ ທ່ານຕ້ອງອາບັດໜັກປານນີ້ ຄື ປາຣາຊິກ ຫຼື ໃກ້ຄຽງປາຣາຊິກ”

ພິກຂຸນັ້ນ ກ່າວແນວນີ້ວ່າ “ທ່ານທັງຫຼາຍ ຂ້າພະເຈົ້າເປັນບ້າ ໃຈຟຸ້ງຊ່ານແລ້ວ ຂ້າພະເຈົ້າຣະນຶກເຖິງກຳອັນບໍ່ສົມຄວນແກ່ສະມະນະເປັນຈຳນວນຫຼາຍ ທີ່ຂ້າພະເຈົ້າຜູ້ເປັນບ້າໄດ້ປະພຶດລ່ວງລະເມີດ ໄດ້ເວົ້າໄປແລ້ວນັ້ນບໍ່ໄດ້ເລີຍ ຂ້າພະເຈົ້າລືມສະຕິ ໄດ້ເຮັດກຳນີ້ແລ້ວ” ເມື່ອເປັນແນວນີ້ ສົງເພິ່ງໃຫ້ອະມູລະຫະວິໄນແກ່ພິກຂຸນັ້ນ

ອານົນ ອະມູລະຫະວິໄນ ເປັນແນວນີ້ ການລະງັບອະທິກອນບາງຢ່າງໃນທຳວິໄນນີ້ ຍ່ອມມີໄດ້ດ້ວຍອະມູລະຫະວິໄນແນວນີ້

[໕໑] ປະຕິນຍາຕະກະຣະນະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຖືກກ່າວຫາກໍຕາມ ບໍ່ຖືກກ່າວຫາກໍຕາມ ຍ່ອມຣະນຶກ ເປີດເຜີຍເຮັດອາບັດນັ້ນໃຫ້ຊັດເຈນໄດ້ ພິກຂຸນັ້ນ ຈຶ່ງເຂົ້າໄປຫາພິກຂຸຜູ້ແກ່ກວ່າ ຫົ່ມຈີວອນບ່ຽງບ່າ ຂາບຕີນ ນັ່ງຢ່ອງຢໍ້ ປະຄອງອັນຊະລີແລ້ວ ກ່າວແນວນີ້ວ່າ “ຂ້າແດ່ ທ່ານຜູ້ຈະເລີນ ຂ້າພະເຈົ້າຕ້ອງອາບັດຊື່ນີ້ແລ້ວ ຂໍສະແດງຄືນອາບັດນັ້ນ” ພິກຂຸຜູ້ແກ່ກວ່ານັ້ນກ່າວວ່າ “ທ່ານເຫັນບໍ່?” ທ່ານກ່າວວ່າ “ຂ້ານ້ອຍ ຂ້າພະເຈົ້າເຫັນ” ພິກຂຸຜູ້ແກ່ກວ່ານັ້ນ ຈຶ່ງກ່າວວ່າ “ທ່ານເພິ່ງສັງລວມຕໍ່ໄປ” ທ່ານກ່າວວ່າ “ຂ້າພະເຈົ້າຈັກສັງລວມ”

ອານົນ ປະຕິນຍາຕະກະຣະນະ ເປັນແນວນີ້ ການລະງັບອະທິກອນບາງຢ່າງໃນທຳວິໄນ

ນີ້ ຍ່ອມມີໄດ້ດ້ວຍປະຕິນຍາຕະກະຣະນະແນວນີ້

[໔໘] ຕັດສະປາປິຍະສິກາ ເປັນແນວໃດ?

ຄື ພິກຂຸທັງຫຼາຍ ໃນທຳວິໄນນີ້ ຍ່ອມກ່າວຫາພິກຂຸດ້ວຍອາບັດໜັກປານນີ້ ຄື ປາຣາຊິກ ຫຼື ໃກ້ຄຽງປາຣາຊິກວ່າ "ທ່ານຣະນຶກໄດ້ບໍວ່າ "ທ່ານຕ້ອງອາບັດໜັກປານນີ້ ຄື ປາຣາຊິກ ຫຼື ໃກ້ຄຽງປາຣາຊິກ"

ພິກຂຸນັ້ນ ຕອບແນວນີ້ວ່າ "ທ່ານທັງຫຼາຍ ຂ້າພະເຈົ້າຣະນຶກບໍ່ໄດ້ເລີຍວ່າ "ຂ້າພະເຈົ້າ ຕ້ອງອາບັດໜັກປານນີ້ ຄື ປາຣາຊິກ ຫຼື ໃກ້ຄຽງປາຣາຊິກ"

ພິກຂຸຜູ້ກ່າວຫານັ້ນ ເພິ່ງປອບໂຍນທ່ານຜູ້ກ່າວແກ້ໂຕວ່າ "ຖ້າຈັ່ງຊັ້ນແລ້ວ ທ່ານຈົ່ງຕອງ ເບິ່ງໃຫ້ດີ ຖ້າທ່ານຣະນຶກໄດ້ວ່າ "ທ່ານຕ້ອງອາບັດໜັກປານນີ້ ຄື ປາຣາຊິກ ຫຼື ໃກ້ຄຽງປາຣາ ຊິກ"

ພິກຂຸນັ້ນ ກ່າວແນວນີ້ວ່າ "ທ່ານທັງຫຼາຍ ຂ້າພະເຈົ້າຣະນຶກບໍ່ໄດ້ເລີຍວ່າ "ຂ້າພະເຈົ້າ ຕ້ອງອາບັດໜັກປານນີ້ ຄື ປາຣາຊິກ ຫຼື ໃກ້ຄຽງປາຣາຊິກ" ແຕ່ຂ້າພະເຈົ້າຣະນຶກໄດ້ວ່າ "ຂ້າພະ ເຈົ້າຕ້ອງອາບັດພຽງເລັກໜ້ອຍທີ່ນັ້ນ" ພິກຂຸ ຜູ້ກ່າວຫານັ້ນ ປອບໂຍນທ່ານ ຜູ້ກ່າວແກ້ໂຕວ່າ "ຖ້າຈັ່ງຊັ້ນແລ້ວ ທ່ານຈົ່ງຕອງເບິ່ງໃຫ້ດີ ຖ້າທ່ານຣະນຶກໄດ້ວ່າ "ທ່ານຕ້ອງອາບັດ ໜັກປານນີ້ ຄື ປາຣາຊິກ ຫຼື ໃກ້ຄຽງປາຣາຊິກ"

ພິກຂຸນັ້ນ ກ່າວແນວນີ້ວ່າ "ທ່ານທັງຫຼາຍ ຄວາມຈິງຂ້າພະເຈົ້າຕ້ອງອາບັດພຽງເລັກ ໜ້ອຍທີ່ນັ້ນ ແມ່ນບໍ່ຖືກໃຜຖາມຍັງຍອມຮັບສາລະພາບ ແລ້ວເປັນຫຍັງ ເມື່ອຕ້ອງອາບັດໜັກ ຄື ປາຣາຊິກ ຫຼື ໃກ້ຄຽງປາຣາຊິກ ເມື່ອຖືກຖາມແລ້ວຈັກບໍ່ຮັບສາລະພາບນໍ"

ພິກຂຸຜູ້ກ່າວຫານັ້ນກ່າວແນວນີ້ວ່າ "ກໍທ່ານຕ້ອງອາບັດພຽງເລັກໜ້ອຍທີ່ນັ້ນ ຍັງບໍ່ຖືກ ຖາມຈຶ່ງບໍ່ຮັບສາລະພາບ ເມື່ອຕ້ອງອາບັດໜັກ ຄື ປາຣາຊິກ ຫຼື ໃກ້ຄຽງປາຣາຊິກ ບໍ່ຖືກຖາມ ແລ້ວ ຈັກຮັບສາລະພາບເຮັດຫຍັງ ຖ້າຈັ່ງຊັ້ນແລ້ວ ທ່ານຈົ່ງຄິດເບິ່ງໃຫ້ດີ ຖ້າທ່ານຣະນຶກໄດ້ວ່າ "ທ່ານຕ້ອງອາບັດໜັກ ຄື ປາຣາຊິກ ຫຼື ໃກ້ຄຽງປາຣາຊິກແດ່ບໍ?"

ພິກຂຸນັ້ນ ກ່າວແນວນີ້ວ່າ "ທ່ານທັງຫຼາຍ ຂ້າພະເຈົ້າກຳລັງຣະນຶກໄດ້ວ່າ "ຂ້າພະເຈົ້າ ຕ້ອງອາບັດໜັກປານນີ້ ຄື ປາຣາຊິກ ຫຼື ໃກ້ຄຽງປາຣາຊິກແລ້ວ" ຄຳທີ່ວ່າຂ້າພະເຈົ້າຣະນຶກເຖິງ ອາບັດນັ້ນບໍ່ໄດ້ວ່າ "ຂ້າພະເຈົ້າຕ້ອງອາບັດໜັກປານນີ້ ຄື ປາຣາຊິກ ຫຼື ໃກ້ຄຽງປາຣາຊິກ" ນີ້ ຂ້າພະເຈົ້າເວົ້າຫຼິ້ນ ເວົ້າຜິດໄປ"

ອານົນ ຕັດສະປາປິຍະສິກາ ເປັນແນວນີ້ ການລະງັບອະທິກອນບາງຢ່າງໃນທຳວິໄນນີ້ ຍ່ອມມີໄດ້ດ້ວຍຕັດສະປາປິຍະສິກາແນວນີ້

[໕໓] ຕິນະວັດຖາຣະກະວິໄນ ເປັນແນວໃດ?

ຄື ກຳອັນບໍ່ສົມຄວນແກ່ສະມະນະເປັນຈຳນວນຫຼາຍ ທີ່ພິກຂຸທັງຫຼາຍໃນທຳວິໄນນີ້ ຜູ້ເກີດການໝາງໃຈກັນ ເກີດການຜິດກັນ ເຖິງການຖຽງກັນຢູ່ ໄດ້ປະພຶດລ່ວງລະເມີດ ໄດ້ເວົ້າລ່ວງເກີນແລ້ວ ພິກຂຸເຫຼົ່ານັ້ນທັງໝົດ ເພິ່ງພ້ອມພຽງກັນປະຊຸມ ພິກຂຸຜູ້ສະຫຼາດກວ່າພິກຂຸທັງຫຼາຍຜູ້ເປັນຝ່າຍດຽວກັນເພິ່ງລຸກຂຶ້ນຈາກອາສະນະ ຫົ່ມຈີວອນບ່ຽງບ່າ ປະຄອງອັນຊະລີແລ້ວປະກາດໃຫ້ສົງຮູ້ວ່າ "ຂ້າແດ່ ສົງຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ກຳອັນບໍ່ສົມຄວນແກ່ສະມະນະເປັນຈຳນວນຫຼາຍ ເຮົາທັງຫຼາຍໃນບ່ອນນີ້ຜູ້ເກີດການໝາງໃຈກັນ ເກີດການຜິດກັນ ເຖິງການຖຽງກັນຢູ່ ໄດ້ປະພຶດລ່ວງລະເມີດ ໄດ້ເວົ້າລ່ວງເກີນແລ້ວ ຖ້າຄວາມພ້ອມພຽງຂອງສົງເຖິງທີ່ແລ້ວ ຂ້າພະເຈົ້າເພິ່ງສະແດງອາບັດຂອງທ່ານເຫຼົ່ານີ້ ແລະ ຂອງຕົນ ຍົກເວັ້ນອາບັດທີ່ມີໂທດຫຍາບແລະອາບັດທີ່ມີຄວາມພົວພັນກັບຄະຫຼືຫັດ ດ້ວຍຕິນະວັດຖາຣະກະວິໄນໃນທ່າມກາງສົງ ເພື່ອປະໂຫຍດແກ່ທ່ານເຫຼົ່ານີ້ ແລະ ເພື່ອປະໂຫຍດແກ່ຕົນ"

ລຳດັບນັ້ນ ພິກຂຸ ຜູ້ສະຫຼາດກວ່າພິກຂຸທັງຫຼາຍ ຜູ້ເປັນຝ່າຍດຽວກັນກັບພິກຂຸອີກຝ່າຍໜຶ່ງ ເພິ່ງລຸກຂຶ້ນຈາກອາສະນະ ຫົ່ມຈີວອນບ່ຽງບ່າ ປະຄອງອັນຊະລີແລ້ວປະກາດໃຫ້ສົງຮູ້ວ່າ "ຂ້າແດ່ ສົງຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ກຳອັນບໍ່ສົມຄວນແກ່ສະມະນະເປັນຈຳນວນຫຼາຍທີ່ເຮົາທັງຫຼາຍໃນບ່ອນນີ້ ຜູ້ເກີດການໝາງໃຈກັນ ເກີດການຜິດກັນ ເຖິງການຖຽງກັນຢູ່ ໄດ້ປະພຶດລ່ວງລະເມີດ ໄດ້ເວົ້າລ່ວງເກີນແລ້ວ ຖ້າຄວາມພ້ອມພຽງຂອງສົງເຖິງທີ່ແລ້ວ ຂ້າພະເຈົ້າເພິ່ງສະແດງອາບັດຂອງທ່ານເຫຼົ່ານີ້ ແລະ ຂອງຕົນ ຍົກເວັ້ນອາບັດທີ່ມີໂທດຫຍາບ ແລະອາບັດທີ່ມີຄວາມພົວພັນກັບຄະຫຼືຫັດ ດ້ວຍຕິນະວັດຖາຣະກະວິໄນໃນທ່າມກາງສົງ ເພື່ອປະໂຫຍດແກ່ທ່ານເຫຼົ່ານີ້ ແລະ ເພື່ອປະໂຫຍດແກ່ຕົນ"

ອານົນ ຕິນະວັດຖາຣະກະວິໄນ ເປັນແນວນີ້ ການລະງັບອະທິກອນບາງຢ່າງໃນທຳວິໄນນີ້ ຍ່ອມມີໄດ້ດ້ວຍຕິນະວັດຖາຣະກະວິໄນແນວນີ້

## ທຳເປັນເຫດໃຫ້ຣະນຶກເຖິງກັນ

[໕໔] ອານົນ ສາຣານີຍະທຳ (ທຳເປັນເຫດໃຫ້ຣະນຶກເຖິງກັນ) ໖ ປະການນີ້ ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

ສາຣານີຍະທຳ ໖ ປະການ ອັນໃດແດ່?

ຄື ພິກຂຸ ໃນທຳວິໄນນີ້

໑. ຕັ້ງໝັ້ນເມດຕາກາຍຍະກຳ ໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ສາຣານີຍະທຳແມ່ນນີ້ ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໒. ຕັ້ງໝັ້ນເມດຕາວະຈີກຳ ໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ສາຣານີຍະທຳແມ່ນນີ້ ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໓. ຕັ້ງໝັ້ນເມດຕາມະໂນກຳ ໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ສາຣານີຍະທຳແມ່ນນີ້ ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໔. ບໍຣິໂພກໂດຍບໍ່ແບ່ງແຍກອລາບທັງຫຼາຍທີ່ຊອບທຳ ໄດ້ມາໂດຍທຳ ໂດຍທີ່ສຸດແມ່ນພຽງບິນທະບາດ ກໍບໍຣິໂພກຮ່ວມກັບເພື່ອນພົມມະຈາຣີທັງຫຼາຍ ຜູ້ມີສີນທັງຕໍ່ໜ້າແລະລັບຫຼັງ ສາຣານີຍະທຳແມ່ນນີ້ ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໕. ເປັນຜູ້ມີສີນບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ໝອງ ເປັນອິດສະຫຼະ ທ່ານຜູ້ຮູ້ສັນເສີນບໍ່ຖືກຕັນຫາແລະທິດຖິຄອບງຳ ເປັນໄປເພື່ອສະມາທິ ສະເໝີກັນກັບເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ສາຣານີຍະທຳແມ່ນນີ້ ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໖. ເປັນຜູ້ມີທິດຖິໂດຍທິດຖິອັນປະເສີດ ເປັນນິຍະຍານິກະທຳ ເພື່ອຄວາມສິ້ນທຸກໂດຍສະເໝີກັນກັບເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ສາຣານີຍະທຳແມ່ນນີ້ ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງ

ເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

ອານົນ ສາຣານີຍະທຳ ໖ ປະການນີ້ ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ ຖ້າທ່ານທັງຫຼາຍເພິ່ງສະມາທານສາຣານີຍະທຳ ໖ ປະການນີ້ ປະພຶດຢູ່ ທ່ານທັງຫຼາຍຈະເຫັນແນວທາງວ່າກ່າວກັນໄດ້ ນ້ອຍແດ່ ຫຼາຍແດ່ ທີ່ທ່ານທັງຫຼາຍເພິ່ງອົດກັ້ນໄວ້ບໍ່ໄດ້ແດ່ບໍ?"

ທ່ານພຣະອານົນຂາບທູນວ່າ "ບໍ່ເຫັນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງສະມາທານສາຣານີຍະທຳ ໖ ປະການນີ້ ແລ້ວປະພຶດເທີ້ນ ການປະພຶດນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອສຸກແກ່ທ່ານທັງຫຼາຍຕະຫຼອດການລະນານ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະອານົນມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ສາມະຄາມະສູດທີ ໔ ຈົບ**

# ໕. ສຸນັກຂັດຕະສູດ

## ວ່າດ້ວຍເຈົ້າສຸນັກຂັດຕະ ລິດສະຫວີບຸດ

[໕໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄາຣະສາລາ ປ່າມະຫາວັນ ເຂດນະຄອນເວສາລີ ສະໄໝນັ້ນ ພິກຂຸເປັນຈຳນວນຫຼາຍໄດ້ພະຍາກອນອະຣະຫັດຕະຜົນໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ "ຂ້າພຣະອົງທັງຫຼາຍຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ເຈົ້າສຸນັກຂັດຕະ ລິດສະຫວີບຸດໄດ້ຟັງວ່າ "ພິກຂຸຈຳນວນຫຼາຍ ໄດ້ພະຍາກອນອະຣະຫັດຕະຜົນໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ "ຂ້າພຣະອົງທັງຫຼາຍຮູ້ແຈ້ງວ່າ "ຊາດສິ້ນແລ້ວຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່

ໄປ" ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຟັງວ່າ "ພິກຂຸຈຳນວນຫຼາຍ ໄດ້ພະຍາກອນອະຣະຫັດຕະຜົນໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ "ຂ້າພຣະອົງທັງຫຼາຍຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ" ພິກຂຸທັງຫຼາຍ ຜູ້ພະຍາກອນອະຣະຫັດຕະຜົນໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າວ່າ "ຂ້າພຣະອົງທັງຫຼາຍຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ" ເຫຼົ່ານັ້ນ ໄດ້ພະຍາກອນອະຣະຫັດຕະຜົນໂດຍຖືກຕ້ອງ ຫຼື ວ່າ ມີພິກຂຸລາງພວກໄດ້ພະຍາກອນອະຣະຫັດຕະຜົນດ້ວຍຄວາມສຳຄັນຕົນວ່າໄດ້ບັນລຸ ຂ້ານ້ອຍ"

[໕໙] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສຸນັກຂັດຕະ ພິກຂຸເຫຼົ່ານັ້ນ ຜູ້ພະຍາກອນອະຣະຫັດຕະຜົນໃນສຳນັກຂອງເຮົາວ່າ "ຂ້າພຣະອົງທັງຫຼາຍ ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ" ມີພິກຂຸລາງພວກໃນສາດສະໜານີ້ ໄດ້ພະຍາກອນອະຣະຫັດຕະຜົນໂດຍຖືກຕ້ອງຢ່າງແນ່ນອນ ແຕ່ມີພິກຂຸລາງພວກໃນສາດສະໜານີ້ ໄດ້ພະຍາກອນອະຣະຫັດຕະຜົນ ດ້ວຍຄວາມສຳຄັນຕົນວ່າໄດ້ບັນລຸ

ສຸນັກຂັດຕະ ບັນດາພິກຂຸເຫຼົ່ານັ້ນ ພິກຂຸທັງຫຼາຍ ຜູ້ພະຍາກອນອະຣະຫັດຕະຜົນໂດຍຖືກຕ້ອງເຫຼົ່ານັ້ນ ຍ່ອມມີອະຣະຫັດຕະຜົນຈິງຢ່າງແນ່ນອນ ສ່ວນບັນດາພິກຂຸຜູ້ພະຍາກອນອະຣະຫັດຕະຜົນດ້ວຍຄວາມສຳຄັນຕົນວ່າໄດ້ບັນລຸເຫຼົ່ານັ້ນ ຕະຖາຄົດມີຄວາມຄິດແນວນີ້ວ່າ "ເຮົາຈັກສະແດງທຳແກ່ພິກຂຸເຫຼົ່ານັ້ນ"

ສຸນັກຂັດຕະ ໃນເລື້ອງນີ້ ຕະຖາຄົດມີຄວາມຄິດແນວນີ້ວ່າ "ເຮົາຈັກສະແດງທຳແກ່ພິກຂຸເຫຼົ່ານັ້ນ" ແຕ່ຖ້າໃນທຳວິໄນນີ້ ມີໂມຄະບຸຣຸດລາງພວກແຕ່ງບັນຫາເຂົ້າມາຖາມຕະຖາຄົດ ຂໍ້ທີ່ຕະຖາຄົດມີຄວາມຄິດໃນພິກຂຸເຫຼົ່ານັ້ນແນວນີ້ວ່າ "ເຮົາຈັກສະແດງທຳແກ່ພິກຂຸເຫຼົ່ານັ້ນ" ກໍຈະເປັນແນວອື່ນໄປ"

ເຈົ້າສຸນັກຂັດຕະຂາບທູນວ່າ "ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ບັດນີ້ເປັນການສົມຄວນ ຂ້າແດ່ ພຣະສຸຄົຕ ບັດນີ້ເປັນການສົມຄວນ ທີ່ພຣະຜູ້ມີພຣະພາກເຈົ້າຈະຊົງສະແດງທຳ ພິກຂຸທັງຫຼາຍໄດ້ສະດັບຈາກພຣະຜູ້ມີພຣະພາກເຈົ້າແລ້ວ ຈັກຊົງຈຳໄວ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສຸນັກຂັດຕະ ຖ້າເຊັ່ນນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ເຈົ້າສຸນັກຂັດຕະ ລິດສະຫວິບຸດທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

[໔໗] "ສຸນັກຂັດຕະ ກາມມະຄຸນ ໕ ປະການນີ້

ກາມມະຄຸນ ໕ ປະການ ອັນໃດແດ່ ຄື

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ
໒. ສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ
໓. ກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ
໔. ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ
໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ສຸນັກຂັດຕະ ກາມມະຄຸນມີ ໕ ປະການນີ້ແລ"

[໔໘] ສຸນັກຂັດຕະ ເປັນໄປໄດ້ທີ່ບຸຣຸດບຸກຄົນລາງຄົນໃນໂລກນີ້ ເພິ່ງເປັນຜູ້ນ້ອມໃຈໄປໃນໂລກາມິດ ບຸຣຸດບຸກຄົນຜູ້ນ້ອມໃຈໄປໃນໂລກາມິດ ສົນທະນາ ແຕ່ເລື້ອງທີ່ເໝາະແກ່ໂລກາມິດນັ້ນທໍ່ນັ້ນ ຍ່ອມຮິ່ນຕອງທຳອັນສົມຄວນແກ່ໂລກາມິດນັ້ນ ຄົບແຕ່ຄົນປະເພດນັ້ນ ແລະ ເຖິງຄວາມດີໃຈກັບຄົນປະເພດນັ້ນ ແຕ່ເມື່ອມີໃຜສົນທະນາກ່ຽວກັບເລື້ອງອາເນນຊະສະມາບັດ ຍ່ອມບໍ່ສົນໃຈຟັງ ບໍ່ງ່ຽງໂສດສະດັບ ບໍ່ຕັ້ງໃຈຮັບຮູ້ ບໍ່ຄົບຄົນປະເພດນັ້ນ ແລະ ບໍ່ເຖິງຄວາມດີໃຈກັບຄົນປະເພດນັ້ນ ປຽບຄື ຄົນທີ່ຈາກເຮືອນ ຫຼື ນິຄົມຂອງຕົນໄປດົນ ພົບບຸຣຸດຄົນໃດຄົນໜຶ່ງຜູ້ຈາກເຮືອນຫຼືນິຄົມໄປບໍ່ດົນ ເພິ່ງຖາມບຸຣຸດນັ້ນ ເຖິງເລື້ອງທີ່ເຮືອນຫຼືນິຄົມນັ້ນ ມີຄວາມສຸກສະບາຍ ທຳມະຫາກິນດີ ແລະ ມີອາພາດໜ້ອຍ ບຸຣຸດນັ້ນ ເພິ່ງບອກເລື້ອງທີ່ເຮືອນ ຫຼື ນິຄົມນັ້ນມີຄວາມສຸກສະບາຍ ທຳມະຫາກິນດີ ແລະ ມີອາພາດໜ້ອຍແກ່ເຂົາ

ສຸນັກຂັດຕະ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ຄົນນັ້ນ ເພິ່ງສົນໃຈຟັງບຸຣຸດນັ້ນ ງ່ຽງໂສດສະດັບ ຕັ້ງໃຈຮັບຮູ້ ຄົບບຸຣຸດນັ້ນ ແລະ ເຖິງຄວາມດີໃຈກັບບຸຣຸດນັ້ນແມ່ນບໍ່?"

"ແມ່ນ ຂ້ານ້ອຍ"

"ສຸນັກຂັດຕະ ເປັນໄປໄດ້ຄືກັນສັນນັ້ນ ທີ່ບຸຣຸດບຸກຄົນລາງຄົນໃນໂລກນີ້ເພິ່ງເປັນຜູ້ນ້ອມໃຈໄປໃນໂລກາມິດ ບຸຣຸດບຸກຄົນຜູ້ນ້ອມໃຈໄປໃນໂລກາມິດ ສົນທະນາແຕ່ເລື້ອງທີ່ເໝາະແກ່ໂລກາມິດນັ້ນທໍ່ນັ້ນ ຍ່ອມຮິ່ນຕອງທຳອັນສົມຄວນແກ່ໂລກາມິດນັ້ນ ຄົບແຕ່ຄົນປະເພດນັ້ນ ແລະ

ເຖິງຄວາມດີໃຈກັບຄົນປະເພດນັ້ນ ແຕ່ເມື່ອມີໃຜເວົ້າກ່ຽວກັບເລື້ອງອາເນນຊະສະມາບັດ ຍ່ອມບໍ່ສົນໃຈຟັງ ບໍ່ງ່ຽງໂສດສະດັບ ບໍ່ຕັ້ງໃຈຮັບຮູ້ ບໍ່ຄົບຄົນປະເພດນັ້ນ ແລະ ບໍ່ເຖິງຄວາມດີໃຈກັບຄົນປະເພດນັ້ນ ບຸຣຸດບຸກຄົນນັ້ນ ບັນດິດເພິ່ງຮູ້ວ່າ ເປັນບຸຣຸດບຸກຄົນຜູ້ເຫີນຫ່າງຈາກການກ່ຽວຂ້ອງກັບອາເນນຊະສະມາບັດ ມີແຕ່ນ້ອມໃຈໄປໃນໂລກາມິດ

[໕໙] ສຸນັກຂັດຕະ ເປັນໄປໄດ້ທີ່ບຸຣຸດບຸກຄົນລາງຄົນໃນໂລກນີ້ ເພິ່ງເປັນຜູ້ນ້ອມໃຈໄປໃນອາເນນຊະສະມາບັດ ບຸຣຸດບຸກຄົນຜູ້ນ້ອມໃຈໄປໃນອາເນນຊະສະມາບັດ ສົນທະນາແຕ່ເລື້ອງທີ່ເໝາະແກ່ອາເນນຊະສະມາບັດນັ້ນທໍ່ນັ້ນ ຍ່ອມຮິ່ນຕອງທຳອັນສົມຄວນແກ່ອາເນຍະຊະສະມາບັດນັ້ນ ຄົບແຕ່ຄົນປະເພດນັ້ນ ແລະ ເຖິງຄວາມດີໃຈກັບຄົນປະເພດນັ້ນ ແຕ່ເມື່ອມີໃຜສົນທະນາກ່ຽວກັບເລື້ອງໂລກາມິດ ຍ່ອມບໍ່ສົນໃຈຟັງ ບໍ່ງ່ຽງໂສດສະດັບ ບໍ່ຕັ້ງໃຈຮັບຮູ້ ບໍ່ຄົບຄົນປະເພດນັ້ນ ແລະ ບໍ່ເຖິງຄວາມດີໃຈກັບຄົນປະເພດນັ້ນ ປຽບຄື ໃບໄມ້ເຫຼືອງລຸດຈາກຂວັ້ນແລ້ວ ບໍ່ກັບຊຽວສົດຂຶ້ນມາໄດ້ ແມ່ນສັນໃດ ຄວາມກ່ຽວຂ້ອງໃນໂລກາມິດຂອງບຸກຄົນຜູ້ນ້ອມໃຈໄປໃນອາເນນຊະສະມາບັດກໍລຸດໄປ ສັນນັ້ນຄືກັນ ບຸຣຸດບຸກຄົນນັ້ນບັນດິດເພິ່ງຮູ້ວ່າ "ເປັນບຸຣຸດບຸກຄົນຜູ້ເຫີນຫ່າງຈາກຄວາມກ່ຽວຂ້ອງກັບໂລກາມິດ ມີແຕ່ນ້ອມໃຈໄປໃນອາເນນຊະສະມາບັດ"

[໖໐] ສຸນັກຂັດຕະ ເປັນໄປໄດ້ທີ່ບຸຣຸດບຸກຄົນລາງຄົນໃນໂລກນີ້ ເພິ່ງເປັນຜູ້ນ້ອມໃຈໄປໃນອາກິນຈັນຍາຍະຕະນະສະມາບັດບຸຣຸດບຸກຄົນຜູ້ນ້ອມໃຈໄປໃນອາກິນຈັນຍາຍະຕະນະສະມາບັດສົນທະນາ ແຕ່ເລື້ອງທີ່ເໝາະແກ່ອາກິນຈັນຍາຍະຕະນະສະມາບັດນັ້ນທໍ່ນັ້ນ ຍ່ອມຮິ່ນຕອງທຳອັນສົມຄວນແກ່ອາກິນຈັນຍາຍະຕະນະສະມາບັດນັ້ນ ຄົບແຕ່ຄົນປະເພດນັ້ນ ແລະເຖິງຄວາມດີໃຈກັບຄົນປະເພດນັ້ນ ແຕ່ເມື່ອມີໃຜສົນທະນາກ່ຽວກັບເລື້ອງອາເນນຊະສະມາບັດ ຍ່ອມບໍ່ສົນໃຈຟັງ ບໍ່ງ່ຽງໂສດສະດັບ ບໍ່ຕັ້ງໃຈຮັບຮູ້ ບໍ່ຄົບຄົນປະເພດນັ້ນ ແລະ ບໍ່ເຖິງຄວາມດີໃຈກັບຄົນປະເພດນັ້ນ

ກ້ອນສິລາແຕກອອກເປັນ ໒ ສ່ຽງແລ້ວ ຍ່ອມເປັນຂອງຕໍ່ກັນໃຫ້ຕິດແຈບບໍ່ໄດ້ອີກ ແມ່ນສັນໃດ ຄວາມກ່ຽວຂ້ອງໃນອາເນນຊະສະມາບັດຂອງບຸກຄົນຜູ້ມີໃຈນ້ອມໄປໃນອາກິນຈັນຍາຍະຕະນະສະມາບັດກໍແຕກ ຄືກັນສັນນັ້ນ ບຸຣຸດບຸກຄົນນັ້ນ ບັນດິດເພິ່ງຮູ້ວ່າ "ເປັນບຸຣຸດບຸກຄົນຜູ້ເຫີນຫ່າງຈາກຄວາມກ່ຽວຂ້ອງກັບອາເນນຊະສະມາບັດ ມີແຕ່ນ້ອມໃຈໄປໃນອາກິນຈັນຍາຍະຕະນະສະມາບັດ"

[໖໑] ສຸນັກຂັດຕະ ເປັນໄປໄດ້ທີ່ບຸຣຸດບຸກຄົນລາງຄົນໃນໂລກນີ້ ເພິ່ງເປັນຜູ້ນ້ອມໃຈໄປໃນເນວະສັນຍານາສັນຍາຍະຕະນະສະມາບັດ ບຸຣຸດບຸກຄົນຜູ້ນ້ອມໃຈໄປໃນເນວະສັນຍານາສັນຍາຍະຕະນະ ສະມາບັດ ສົນທະນາແຕ່ເລື້ອງທີ່ເໝາະແກ່ເນວະສັນຍານາສັນຍາຍະຕະນະສະມາບັດນັ້ນທໍ່ນັ້ນ ຍ່ອມຮິ່ນຕອງທຳອັນສົມຄວນແກ່ເນວະສັນຍານາສັນຍາຍະຕະນະສະມາບັດນັ້ນ

ຄົບແຕ່ຄົນ ປະເພດນັ້ນ ແລະເຖິງຄວາມດີໃຈກັບຄົນປະເພດນັ້ນ ແຕ່ເມື່ອມີໃຜສົນທະນາກ່ຽວກັບເລື້ອງອາກິນຈັນຍາຍະຕະນະສະມາບັດ ຍ່ອມບໍ່ສົນໃຈຟັງ ບໍ່ງ່ຽງໂສດສະດັບ ບໍ່ຕັ້ງໃຈຮັບຮູ້ ບໍ່ຄົບຄົນປະເພດນັ້ນ ແລະບໍ່ເຖິງຄວາມດີໃຈກັບຄົນປະເພດນັ້ນ ປຽບຄື ຄົນບໍຣິໂພກໂພຊະນະທີ່ຖືກໃຈຈົນອີ່ມໜໍາແລ້ວກໍຢຸດສາ

ສຸນັກຂັດຕະ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ຄົນນັ້ນ ເພິ່ງມີຄວາມປາຖະໜາໃນອາຫານນັ້ນອີກບໍ?"

"ບໍ່ປາຖະໜາ ຂ້ານ້ອຍ"

"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນວ່າອາຫານນັ້ນ ຕົນເອງຮູ້ສຶກວ່າເປັນຂອງບໍ່ໜ້າກິນສາແລ້ວ ຂ້ານ້ອຍ"

"ສຸນັກຂັດຕະ ຄວາມກ່ຽວຂ້ອງໃນອາກິນຈັນຍາຍະຕະນະສະມາບັດ ກໍຖືກບຸຣຸດບຸກຄົນຜູ້ນ້ອມໃຈໄປໃນເນວະສັນຍານາສັນຍາຍະຕະນະສະມາບັດຄາຍໄດ້ແລ້ວ ແນວນັ້ນຄືກັນ ບຸຣຸດບຸກຄົນນັ້ນບັນດິດເພິ່ງຮູ້ວ່າ "ເປັນບຸຣຸດບຸກຄົນຜູ້ເຫີນຫ່າງຈາກຄວາມກ່ຽວຂ້ອງກັບອາກິນຈັນຍາຍະຕະນະສະມາບັດ ມີແຕ່ນ້ອມໃຈໄປໃນເນວະສັນຍານາສັນຍາຍະຕະນະສະມາບັດ"

[໖໘] ສຸນັກຂັດຕະ ເປັນໄປໄດ້ທີ່ບຸຣຸດບຸກຄົນລາງຄົນໃນໂລກນີ້ ເພິ່ງເປັນຜູ້ນ້ອມໃຈໄປໃນນິບພານໂດຍຖືກຕ້ອງ ບຸຣຸດບຸກຄົນຜູ້ນ້ອມໃຈໄປໃນນິບພານໂດຍຖືກຕ້ອງ ສົນທະນາແຕ່ເລື້ອງທີ່ເໝາະແກ່ນິບພານໂດຍຖືກຕ້ອງນັ້ນທໍ່ນັ້ນ ຍ່ອມຮິ່ນຕອງທໍາອັນສົມຄວນແກ່ນິບພານໂດຍຖືກຕ້ອງນັ້ນ ຄົບແຕ່ຄົນປະເພດນັ້ນ ແລ ະເຖິງຄວາມດີໃຈກັບຄົນປະເພດນັ້ນ ແຕ່ເມື່ອມີໃຜສົນທະນາກ່ຽວກັບເລື້ອງເນວະສັນຍານາສັນຍາຍະຕະນະສະມາບັດ ຍ່ອມບໍ່ສົນໃຈຟັງ ບໍ່ງ່ຽງໂສດສະດັບ ບໍ່ຕັ້ງໃຈຮັບຮູ້ ບໍ່ຄົບຄົນປະເພດນັ້ນ ແລະ ບໍ່ເຖິງຄວາມດີໃຈກັບຄົນປະເພດນັ້ນ

ປຽບຄື ກົກຕານປາຍກຸດບໍ່ອາດງອກງາມໄດ້ອີກ ແມ່ນສັນໃດ ຄວາມກ່ຽວຂ້ອງໃນເນວະສັນຍານາສັນຍາຍະຕະນະສະມາບັດ ກໍຖືກບຸຣຸດບຸກຄົນຜູ້ນ້ອມໃຈໄປໃນນິບພານໂດຍຖືກຕ້ອງຖອນຂຶ້ນໄດ້ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຄືກັນສັນນັ້ນ ບຸຣຸດບຸກຄົນນັ້ນບັນດິດເພິ່ງຮູ້ວ່າ "ເປັນບຸຣຸດບຸກຄົນຜູ້ເຫີນຫ່າງຈາກຄວາມກ່ຽວຂ້ອງກັບເນວະສັນຍານາສັນຍາຍະຕະນະສະມາບັດ ມີແຕ່ນ້ອມໃຈໄປໃນນິບພານໂດຍຖືກຕ້ອງ"

[໖໙] ສຸນັກຂັດຕະ ເປັນໄປໄດ້ທີ່ພິກຂຸລາງອົງໃນທໍາວິໄນນີ້ ເພິ່ງມີຄວາມຄິດແນວນີ້ວ່າ "ພຣະສະມະນະຕັດລູກສອນຄືຕັນຫາໄວ້ແລ້ວວ່າ "ໂທດອັນເປັນພິດ ຄື ອະວິດຊາ ຍ່ອມງອກງາມໄດ້ດ້ວຍສັນທະຣາຄະ ແລະ ພະຍາບາດ ເຮົາລະລູກສອນຄືຕັນຫານັ້ນໄດ້ແລ້ວ ກໍາຈັດໂທດ

ອັນເປັນພິດຄືອະວິດຊາໄດ້ແລ້ວ ຈຶ່ງເປັນຜູ້ມີໃຈນ້ອມໄປໃນນິບພານໂດຍຖືກຕ້ອງ" ເລື້ອງຕໍ່ໄປນີ້ມີເນື້ອຄວາມດັ່ງນີ້ ພິກຂຸນັ້ນ ເພິ່ງປະກອບເລື້ອຍ ໆ ເຊິ່ງອາລົມອັນບໍ່ເປັນສັບປາຍະແຫ່ງໃຈອັນນ້ອມໄປໃນນິບພານໂດຍຖືກຕ້ອງ ເພິ່ງປະກອບການເບິ່ງຮູບອັນບໍ່ເປັນສັບປາຍະທາງຕາເລື້ອຍ ໆ ເພິ່ງປະກອບການຟັງສຽງອັນບໍ່ເປັນສັບປາຍະທາງຫູເລື້ອຍ ໆ ເພິ່ງປະກອບການດົມກິ່ນອັນບໍ່ເປັນສັບປາຍະທາງດັງເລື້ອຍ ໆ ເພິ່ງປະກອບການກິນຣົດອັນບໍ່ເປັນສັບປາຍະທາງລີ້ນເລື້ອຍ ໆ ເພິ່ງປະກອບການຖືກຕ້ອງໂຜດຖັບພະອັນບໍ່ເປັນສັບປາຍະທາງກາຍເລື້ອຍ ໆ ເພິ່ງປະກອບການຮັບຮູ້ທຳມາຣົມອັນບໍ່ເປັນສັບປາຍະທາງໃຈເລື້ອຍ ໆ ເມື່ພິກຂຸນັ້ນ ປະກອບການເບິ່ງຮູບອັນບໍ່ເປັນສັບປາຍະທາງຕາເລື້ອຍ ໆ ປະກອບການຟັງສຽງອັນບໍ່ເປັນສັບປາຍະທາງຫູເລື້ອຍ ໆ ປະກອບການດົມກິ່ນອັນບໍ່ເປັນສັບປາຍະທາງດັງເລື້ອຍ ໆ ປະກອບການກິນຣົດອັນບໍ່ເປັນສັບປາຍະທາງລີ້ນເລື້ອຍ ໆ ປະກອບການຖືກຕ້ອງໂຜດຖັບພະອັນບໍ່ເປັນສັບປາຍະທາງກາຍເລື້ອຍ ໆ ປະກອບການຮັບຮູ້ທຳມາຣົມອັນບໍ່ເປັນສັບປາຍະທາງໃຈເລື້ອຍ ໆ ແລ້ວ ຣາຄະເພິ່ງຄອບງຳຈິດໄດ້ ທ່ານມີຈິດຖືກຣາຄະຄອບງຳແລ້ວ ເພິ່ງເຖິງຄວາມຕາຍ ຫຼື ທຸກປາງຕາຍ

ປຽບຄື ຄົນຖືກຍິງດ້ວຍລູກສອນທີ່ອາບຢາພິດແນວຮ້າຍແຮງ ມິດ ອຳມາດ ຍາດສາໂລຫິດຂອງເຂົາຈຶ່ງຫາໝໍປາດມາປິ່ນປົວ ໝໍປາດນັ້ນ ໃຊ້ມີດປາດປາກບາດແລ້ວໃຊ້ເຄື່ອງກວດຫາລູກສອນ ກວດພົບລູກສອນແລ້ວຈຶ່ງດຶງອອກ ເພິ່ງກຳຈັດໂທດຄືພິດທີ່ຍັງມີເຊື້ອເຫຼືອຕິດຢູ່ ຈົນຮູ້ວ່າ "ບໍ່ມີເຊື້ອຫຼົງເຫຼືອຢູ່" ໝໍປາດນັ້ນເພິ່ງກ່າວແນວນີ້ວ່າ "ທ່ານຜູ້ຈະເລີນທັງຫຼາຍ ເຮົາດຶງລູກສອນອອກໃຫ້ທ່ານແລ້ວ ໂທດຄືພິດເຮົາກໍກຳຈັດຈົນບໍ່ມີເຊື້ອຫຼົງເຫຼືອແລ້ວ ທ່ານພົ້ນຂີດອັນຕະລາຍແລ້ວ ແຕ່ຕ້ອງກິນອາຫານທີ່ບໍ່ສະແຫຼງ ເມື່ອທ່ານຈຳເປັນຕ້ອງກິນອາຫານທີ່ສະແຫຼງ ກໍຢ່າເຖິງກັບວ່າໃຫ້ບາດຕ້ອງກຳເຣີບ ແລະ ທ່ານຕ້ອງລ້າງບາດຕາມເວລາ ທາຢາຈອດບາດຕາມເວລາ ເມື່ອທ່ານລ້າງບາດ ແລະ ທາຢາຈອດບາດຕາມເວລາ ກໍຢ່າໃຫ້ນ້ຳເຫຼືອງແລະເລືອດອັດປາກບາດໄດ້ ແລະ ທ່ານຢ່າທ່ຽວຕາກລົມຕາກແດດເລື້ອຍ ໆ ເມື່ອທ່ານທ່ຽວຕາກລົມຕາກແດດເລື້ອຍ ໆ ກໍຢ່າໃຫ້ລະອອງ ຫຼື ສິ່ງສົກກະປົກຖືກປາກບາດໄດ້ ທ່ານຕ້ອງຖືຮັກສາບາດຢູ່ຈົນກວ່າບາດຈະຈອດກັນດີ"

ບຸຣຸດນັ້ນ ມີຄວາມຄິດແນວນີ້ວ່າ "ໝໍດຶງລູກສອນອອກໃຫ້ເຮົາແລ້ວ ໂທດຄືພິດໝໍກໍກຳຈັດຈົນບໍ່ມີເຊື້ອຫຼົງເຫຼືອແລ້ວ ເຮົາພົ້ນຂີດອັນຕະລາຍແລ້ວ" ເຂົາຈຶ່ງກິນອາຫານທີ່ສະແຫຼງ ເມື່ອເຂົາກິນອາຫານທີ່ສະແຫຼງ ບາດກໍກຳເຣີບ ເຂົາບໍ່ລ້າງບາດຕາມເວລາ ແລະ ບໍ່ທາຢາຈອດບາດຕາມເວລາ ເມື່ອເຂົາບໍ່ລ້າງບາດແລະບໍ່ທາຢາຈອດບາດຕາມເວລາ ນ້ຳເຫຼືອງແລະເລືອດກໍອັດປາກບາດ ເຂົາທ່ຽວຕາກລົມຕາກແດດເລື້ອຍ ໆ ເມື່ອເຂົາທ່ຽວຕາກລົມຕາກແດດເລື້ອຍ ໆ ຂີ້ຝຸ່ນແລະສິ່ງສົກກະປົກຈຶ່ງຖືກປາກບາດ ເຂົາບໍ່ລະວັງຮັກສາບາດຢູ່ ບາດຈຶ່ງບໍ່ຈອດກັນ ຍ້ອນການກະທຳບໍ່ຖືກຕ້ອງນີ້ ບາດຈຶ່ງອັກເສບໄດ້ດ້ວຍເຫດ ໒ ປະການ ຄື (໑) ບໍ່ກຳຈັດໂທດຄືພິດ

ອັນເກີດຈາກຄວາມບໍ່ສະອາດ (໘) ບໍ່ກຳຈັດໂທດຄືພິດອັນຍັງມີເຊື້ອຫຼົງເຫຼືອຢູ່ອອກໄປ ເຂົາມີບາດອັກເສບ ເພິ່ງເຖິງຄວາມຕາຍຫຼືທຸກປາງຕາຍໄດ້ ແມ່ນສັນໃດ

ສຸນັກຂັດຕະ ເປັນໄປໄດ້ຄືກັນສັນນັ້ນ ທີ່ພິກຂຸລາງອົງໃນທຳວິໄນນີ້ ເພິ່ງມີຄວາມຄິດແນວນີ້ວ່າ "ພຣະສະມະນະຕັດລູກສອນຄືຕັນຫາໄວ້ແລ້ວວ່າ "ໂທດອັນເປັນພິດຄືອະວິດຊາ ຍ່ອມງອກງາມໄດ້ດ້ວຍສັນທະຣາຄະແລະພະຍາບາດ ເຮົາລະລູກສອນຄືຕັນຫານັ້ນໄດ້ແລ້ວ ກຳຈັດໂທດອັນເປັນພິດຄືອະວິດຊາໄດ້ແລ້ວ ຈຶ່ງເປັນຜູ້ມີໃຈນ້ອມໄປໃນນິບພານໂດຍຖືກຕ້ອງ" ເລື້ອງຕໍ່ໄປນີ້ມີເນື້ອຄວາມດັ່ງນີ້ ພິກຂຸນັ້ນປະກອບເລື້ອຍ ໆ ເຊິ່ງອາລົມອັນບໍ່ເປັນສັບປາຍະ ແຫ່ງໃຈອັນນ້ອມໄປໃນນິບພານໂດຍຖືກຕ້ອງ ເພິ່ງປະກອບການເບິ່ງຮູບອັນບໍ່ເປັນສັບປາຍະທາງຕາເລື້ອຍ ໆ ເພິ່ງປະກອບການຟັງສຽງອັນບໍ່ເປັນສັບປາຍະທາງຫູເລື້ອຍ ໆ ເພິ່ງປະກອບການດົມກິ່ນອັນບໍ່ເປັນສັບປາຍະທາງດັງເລື້ອຍ ໆ ເພິ່ງປະກອບການຊີມຣົດອັນບໍ່ເປັນສັບປາຍະທາງລີ້ນເລື້ອຍ ໆ ເພິ່ງປະກອບການຖືກຕ້ອງໂຜດຖັບພະອັນບໍ່ເປັນສັບປາຍະ ທາງກາຍເລື້ອຍ ໆ ເພິ່ງປະກອບການຮັບຮູ້ທຳມາຣົມອັນບໍ່ເປັນສັບປາຍະທາງໃຈເລື້ອຍ ໆ ເມື່ອພິກຂຸນັ້ນ ເຫັນຮູບອັນບໍ່ເປັນສັບປາຍະທາງຕາເລື້ອຍ ໆ ປະກອບການຟັງສຽງອັນບໍ່ເປັນສັບປາຍະທາງຫູເລື້ອຍ ໆ ປະກອບການດົມກິ່ນອັນບໍ່ເປັນສັບປາຍະທາງດັງເລື້ອຍ ໆ ປະກອບການຊີມຣົດອັນບໍ່ເປັນສັບປາຍະທາງລີ້ນເລື້ອຍ ໆ ປະກອບການຖືກຕ້ອງໂຜດຖັບພະອັນບໍ່ເປັນສັບປາຍະທາງກາຍເລື້ອຍ ໆ ປະກອບການຮັບຮູ້ທຳມາຣົມອັນບໍ່ເປັນສັບປາຍະທາງໃຈເລື້ອຍ ໆ ແລ້ວ ຣາຄະເພິ່ງຄອບງຳຈິດໄດ້ ທ່ານມີຈິດຖືກຣາຄະຄອບງຳແລ້ວ ເພິ່ງເຖິງຄວາມຕາຍຫຼືທຸກປາງຕາຍ

ສຸນັກຂັດຕະ ນັ້ນເປັນຄວາມຕາຍຂອງພິກຂຸຜູ້ບອກຄືນສິກຂາກັບມາເປັນຄະຫຼືຫັດໃນອະຣິຍະວິໄນ ສ່ວນທຸກນີ້ເປັນທຸກປາງຕາຍຂອງພິກຂຸ ຜູ້ຕ້ອງອາບັດເສົ້າໝອງຂໍ້ໃດຂໍ້ໜຶ່ງ

[໖໔] ສຸນັກຂັດຕະ ເປັນໄປໄດ້ທີ່ພິກຂຸລາງອົງໃນທຳວິໄນນີ້ເພິ່ງມີຄວາມຄິດແນວນີ້ວ່າ "ພຣະສະມະນະຕັດລູກສອນຄືຕັນຫາໄວ້ແລ້ວວ່າ "ໂທດອັນເປັນພິດຄືອະວິດຊາຍ່ອມງອກງາມໄດ້ດ້ວຍສັນທະຣາຄະແລະພະຍາບາດ ເຮົາລະລູກສອນຄືຕັນຫານັ້ນໄດ້ແລ້ວ ກຳຈັດໂທດອັນເປັນພິດຄືອະວິດຊາໄດ້ແລ້ວ ຈຶ່ງເປັນຜູ້ມີໃຈນ້ອມໄປໃນນິບພານໂດຍຖືກຕ້ອງ" ເມື່ອພິກຂຸນັ້ນມີໃຈນ້ອມໄປໃນນິບພານໂດຍຖືກຕ້ອງຢູ່ນັ້ນແລ ທ່ານຈຶ່ງບໍ່ປະກອບເລື້ອຍ ໆ ເຊິ່ງອາລົມອັນບໍ່ເປັນສັບປາຍະແຫ່ງໃຈອັນນ້ອມໄປໃນນິບພານໂດຍຖືກຕ້ອງ ບໍ່ປະກອບການເບິ່ງຮູບອັນບໍ່ເປັນສັບປາຍະທາງຕາເລື້ອຍ ໆ ບໍ່ປະກອບການຟັງສຽງອັນບໍ່ເປັນສັບປາຍະທາງຫູເລື້ອຍ ໆ ບໍ່ປະກອບການດົມກິ່ນອັນບໍ່ເປັນສັບປາຍະທາງດັງເລື້ອຍ ໆ ບໍ່ປະກອບການຊີມຣົດອັນບໍ່ເປັນສັບປາຍະທາງລີ້ນເລື້ອຍ ໆ ບໍ່ປະກອບການຖືກຕ້ອງໂຜດຖັບພະອັນບໍ່ເປັນ

ສັບປາຍະທາງກາຍເລື້ອຍ ໆ ບໍ່ປະກອບການຮັບຮູ້ທຳມາຣົມອັນບໍ່ເປັນສັບປາຍະທາງໃຈ

ເລື້ອຍ ໆ ເມື່ທ່ານບໍ່ປະກອບການເບິ່ງຮູບອັນບໍ່ເປັນສັບປາຍະທາງຕາເລື້ອຍ ໆ ບໍ່ປະກອບການຟັງສຽງອັນບໍ່ເປັນສັບປາຍະທາງຫູເລື້ອຍ ໆ ບໍ່ປະກອບການດົມກິ່ນອັນບໍ່ເປັນສັບປາຍະທາງດັງເລື້ອຍ ໆ ບໍ່ປະກອບການຊີມຣົດອັນບໍ່ເປັນສັບປາຍະທາງລີ້ນເລື້ອຍ ໆ ບໍ່ປະກອບການຖືກຕ້ອງໂຜດຖັບພະອັນບໍ່ເປັນສັບປາຍະທາງກາຍເລື້ອຍ ໆ ບໍ່ປະກອບການຮັບຮູ້ທຳມາຣົມອັນບໍ່ເປັນສັບປາຍະທາງໃຈເລື້ອຍ ໆ ແລ້ວ ຣາຄະກໍຄອບງຳຈິດບໍ່ໄດ້ ທ່ານມີຈິດບໍ່ຖືກຣາຄະຄອບງຳແລ້ວຈຶ່ງບໍ່ເພິ່ງເຖິງຄວາມຕາຍຫຼືທຸກປາງຕາຍ

ປຽບຄື ຄົນຖືກຍິງດ້ວຍລູກສອນທີ່ອາບຢາພິດແນວຮ້າຍແຮງ ມິດ ອຳມາດ ຍາດສາໂລຫິດຂອງເຂົາຈຶ່ງຫາໝໍປາດມາປິ່ນປົວ ໝໍປາດນັ້ນໃຊ້ມີດປາດປາກບາດ ແລ້ວໃຊ້ເຄື່ອງກວດຫາລູກສອນ ກວດພົບລູກສອນແລ້ວຈຶ່ງດຶງອອກ ເພິ່ງກຳຈັດໂທດຄືພິດທີ່ຍັງມີເຊື້ອເຫຼືອຢູ່ ຈົນຮູ້ວ່າ "ບໍ່ມີເຊື້ອຫຼົງເຫຼືອຢູ່" ໝໍປາດນັ້ນເພິ່ງກ່າວແນວນີ້ວ່າ "ທ່ານຜູ້ຈະເລີນທັງຫຼາຍ ເຮົາດຶງລູກສອນອອກໃຫ້ທ່ານແລ້ວ ໂທດຄືພິດເຮົາກໍກຳຈັດຈົນບໍ່ມີເຊື້ອຫຼົງເຫຼືອແລ້ວ ທ່ານພົ້ນຂີດອັນຕະລາຍແລ້ວ ແຕ່ຕ້ອງກິນອາຫານທີ່ບໍ່ສະແຫຼງ ເມື່ອທ່ານຈຳເປັນຕ້ອງກິນອາຫານທີ່ສະແຫຼງ ກໍຢ່າເຖິງກັບວ່າໃຫ້ບາດຕ້ອງກຳເຣີບ ແລະທ່ານຕ້ອງລ້າງບາດຕາມເວລາ ທາຢາຈອດບາດຕາມເວລາ ເມື່ອທ່ານລ້າງບາດແລະທາຢາຈອດບາດຕາມເວລາ ກໍຢ່າໃຫ້ນ້ຳເຫຼືອງແລະເລືອດອັດປາກບາດໄດ້ ແລະທ່ານຢ່າທ່ຽວຕາກລົມຕາກແດດເລື້ອຍ ໆ ເມື່ອທ່ານທ່ຽວຕາກລົມຕາກແດດເລື້ອຍ ໆ ກໍຢ່າໃຫ້ລະອອງຫຼືສິ່ງສົກກະປົກຖືກປາກບາດໄດ້ ທ່ານຕ້ອງລະວັງຮັກສາບາດຢູ່ຈົນກວ່າບາດຈະຈອດກັນດີ"

ບຸຣຸດນັ້ນ ມີຄວາມຄິດແນວນີ້ວ່າ "ໝໍດຶງລູກສອນອອກໃຫ້ເຮົາແລ້ວ ໂທດຄືພິດໝໍກໍກຳຈັດຈົນບໍ່ມີເຊື້ອຫຼົງເຫຼືອແລ້ວ ເຮົາພົ້ນຂີດອັນຕະລາຍແລ້ວ" ເຂົາຈຶ່ງກິນອາຫານທີ່ບໍ່ສະແຫຼງ ເມື່ອເຂົາກິນອາຫານທີ່ບໍ່ສະແຫຼງ ບາດກໍບໍ່ອັກເສບ ເຂົາລ້າງບາດຕາມເວລາ ແລະທາຢາຈອດບາດຕາມເວລາ ເມື່ອເຂົາລ້າງບາດແລະທາຢາຈອດບາດຕາມເວລາ ນ້ຳເຫຼືອງແລະເລືອດກໍບໍ່ອັດປາກບາດ ເຂົາບໍ່ທ່ຽວຕາກລົມຕາກແດດເລື້ອຍ ໆ ເມື່ອເຂົາບໍ່ທ່ຽວຕາກລົມຕາກແດດເລື້ອຍ ໆ ຂີ້ຝຸ່ນແລະສິ່ງສົກກະປົກຈຶ່ງບໍ່ຖືກປາກບາດ ເຂົາລະວັງຮັກສາບາດຢູ່ຈົນປາກບາດຈອດກັນດີ ຍ້ອນການກະທຳທີ່ຖືກຕ້ອງນີ້ ບາດຈຶ່ງເຊົາໄດ້ດ້ວຍເຫດ ໒ ປະການ ຄື (໑) ກຳຈັດໂທດຄືພິດອັນເກີດຈາກຄວາມບໍ່ສະອາດ (໒) ກຳຈັດໂທດຄືພິດຈົນບໍ່ມີເຊື້ອຫຼົງເຫຼືອຢູ່ ຍ້ອນບາດເຊົາແລ້ວເຂົາຈຶ່ງມີຜິວພັນກ້ຽງ ຈຶ່ງບໍ່ເຖິງຄວາມຕາຍຫຼືທຸກປາງຕາຍ ແມ່ນສັນໃດ

ສຸນັກຂັດຕະ ເປັນໄປໄດ້ຄືກັນສັນນັ້ນ ທີ່ພິກຂຸລາງອົງໃນທຳວິໄນນີ້ ເພິ່ງມີຄວາມຄິດແນວນີ້ວ່າ "ພຣະສະມະນະຕັດລູກສອນຄືຕັນຫາໄວ້ແລ້ວວ່າ "ໂທດອັນເປັນພິດຄືອະວິດຊາຍ່ອມງອກງາມໄດ້ດ້ວຍສັນທະຣາຄະແລະພະຍາບາດ ເຮົາລະລູກສອນຄືຕັນຫານັ້ນໄດ້ແລ້ວ ກຳຈັດໂທດອັນເປັນພິດຄືອະວິດຊາໄດ້ແລ້ວ ຈຶ່ງເປັນຜູ້ມີໃຈນ້ອມໄປໃນນິບພານໂດຍຖືກຕ້ອງ" ເມື່ອພິກ

ຂຸນັ້ນມີໃຈນ້ອມໄປໃນນິບພານໂດຍຖືກຕ້ອງຢູ່ນັ້ນແລ ທ່ານຈຶ່ງບໍ່ປະກອບເລື້ອຍ ໆ ເຊິ່ງອາລົມອັນບໍ່ເປັນສັບປາຍະແຫ່ງໃຈອັນນ້ອມໄປໃນນິບພານໂດຍຖືກຕ້ອງ ບໍ່ປະກອບການເບິ່ງຮູບອັນບໍ່ເປັນສັບປາຍະທາງຕາເລື້ອຍ ໆ ບໍ່ປະກອບການຟັງສຽງອັນບໍ່ເປັນສັບປາຍະທາງຫູເລື້ອຍ ໆ ບໍ່ປະກອບການດົມກິ່ນອັນບໍ່ເປັນສັບປາຍະທາງດັງເລື້ອຍ ໆ ບໍ່ປະກອບ ການຊີມຣົດອັນບໍ່ເປັນສັບປາຍະທາງລີ້ນເລື້ອຍ ໆ ບໍ່ປະກອບການຖືກຕ້ອງໂຜດຖັບພະອັນບໍ່ ເປັນສັບປາຍະທາງກາຍເລື້ອຍ ໆ ບໍ່ປະກອບການຮັບຮູ້ທຳມາຣົມອັນບໍ່ເປັນສັບປາຍະທາງໃຈເລື້ອຍ ໆ ເມື່ອພິກຂຸນັ້ນບໍ່ປະກອບການເບິ່ງຮູບອັນບໍ່ເປັນສັບປາຍະທາງຕາເລື້ອຍ ໆ ບໍ່ປະກອບການຟັງສຽງອັນບໍ່ເປັນສັບປາຍະທາງຫູເລື້ອຍ ໆ ບໍ່ປະກອບການດົມກິ່ນອັນ ບໍ່ເປັນສັບປາຍະທາງດັງເລື້ອຍ ໆ ບໍ່ປະກອບການຊີມຣົດອັນບໍ່ເປັນສັບປາຍະທາງລີ້ນເລື້ອຍ ໆ ບໍ່ປະກອບການຖືກຕ້ອງໂຜດຖັບພະອັນບໍ່ເປັນສັບປາຍະທາງກາຍເລື້ອຍ ໆ ບໍ່ປະກອບການຮັບຮູ້ທຳມາຣົມອັນບໍ່ເປັນສັບປາຍະທາງໃຈເລື້ອຍ ໆ ແລ້ວ ຣາຄະກໍຄອບງຳຈິດບໍ່ໄດ້ ທ່ານມີຈິດບໍ່ຖືກຣາຄະຄອບງຳແລ້ວ ຈຶ່ງບໍ່ເພິ່ງເຖິງຄວາມຕາຍ ຫຼືທຸກປາງຕາຍ

[໖໕] ສຸນັກຂັດຕະ ເພື່ອໃຫ້ຮູ້ເນື້ອຄວາມ ເຮົາຈຶ່ງເຮັດອຸປະມານີ້ໄວ້ ໃນອຸປະມານີ້ມີເນື້ອຄວາມດັ່ງຕໍ່ໄປນີ້

ຄຳວ່າ "ບາດ" ນີ້ ເປັນຊື່ຂອງອາຍະຕະນະພາຍໃນ ໖
ຄຳວ່າ "ໂທດຄືພິດ" ນີ້ ເປັນຊື່ຂອງອະວິດຊາ
ຄຳວ່າ "ລູກສອນ" ນີ້ ເປັນຊື່ຂອງຕັນຫາ
ຄຳວ່າ "ເຄື່ອງກວດ" ນີ້ ເປັນຊື່ຂອງສະຕິ
ຄຳວ່າ "ມີດປາດ" ນີ້ ເປັນຊື່ຂອງອະຣິຍະປັນຍາ
ຄຳວ່າ "ໝໍປາດ" ນີ້ ເປັນຊື່ຂອງຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ

ສຸນັກຂັດຕະ ເປັນໄປບໍ່ໄດ້ທີ່ພິກຂຸນັ້ນທຳຄວາມສັງລວມໃນຜັດສາຍະຕະນະ ໖ ຈຶ່ງຮູ້ດັ່ງນີ້ວ່າ "ອຸປະທິ[໑]ເປັນຮາກເງົ້າແຫ່ງທຸກ" ຈຶ່ງເປັນຜູ້ປາສະຈາກອຸປະທິ ລຸດພົ້ນແລ້ວໃນທຳເປັນທີ່ສິ້ນໄປແຫ່ງອຸປະທິ[໒] ຈັກນ້ອມກາຍ ຫຼື ປ່ອຍຈິດໄປໃນອຸປະທິ

ປຽບຄື ພາຊະນະມີນ້ຳດື່ມເຕັມປ່ຽມ ສົມບູນດ້ວຍສີ ສົມບູນດ້ວຍກິ່ນ ສົມບູນດ້ວຍຣົດ ແຕ່ໃສ່ຢາພິດ ຕໍ່ມາບຸຣຸດຜູ້ຮັກຊີວິດຍັງບໍ່ຢາກຕາຍ ຮັກສຸກກຽດຊັງທຸກມາພົບເຂົ້າ

ສຸນັກຂັດຕະ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ບຸຣຸດນັ້ນ ຈະເພິ່ງດື່ມນ້ຳທີ່ເຕັມພາຊະນະນັ້ນ ທັງທີ່ຮູ້ວ່າ "ດື່ມແລ້ວຈະຕ້ອງຕາຍ ຫຼື ທຸກປາງຕາຍ" ແດ່ບໍ?"

"ບໍ່ດື່ມ ຂ້ານ້ອຍ"

"ສຸນັກຂັດຕະ ເປັນໄປບໍ່ໄດ້ຄືກັນສັນນັ້ນ ທີ່ພິກຂຸນັ້ນ ທຳຄວາມສັງລວມໃນຜັດສາຍະຕະນະ ໖ ຮູ້ດັ່ງນີ້ວ່າ "ອຸປະທິເປັນຮາກເງົ່າແຫ່ງທຸກ ໗ລ໗"

ຕໍ່ມາ ບຸຣຸດຜູ້ຮັກຊີວິດຍັງບໍ່ຍາກຕາຍ ຮັກສຸກກຽດຊັງທຸກ ມາພົບອະສໍຣະພິດມີພິດຮ້າຍແຮງເຂົ້າ

ສຸນັກຂັດຕະ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ບຸຣຸດນັ້ນ ຈະເພິ່ງຍື່ນມືຫຼືຫົວໂປ້ມືໃຫ້ແກ່ອະສໍຣະພິດໂຕມີພິດຮ້າຍແຮງນັ້ນ ທັງທີ່ຮູ້ວ່າ "ຖືກອະສໍຣະພິດທີ່ມີພິດຮ້າຍແຮງກັດແລ້ວຈະຕ້ອງຕາຍຫຼືທຸກປາງຕາຍ" ແດ່ບໍ?"

"ບໍ່ຍື່ນ ຂ້ານ້ອຍ"

"ສຸນັກຂັດຕະ ເປັນໄປບໍ່ໄດ້ຄືກັນສັນນັ້ນ ທີ່ພິກຂຸນັ້ນທຳຄວາມສັງລວມໃນຜັດສາຍະຕະນະ ໖ ຮູ້ດັ່ງນີ້ວ່າ "ອຸປະທິເປັນຮາກເຫງົ້າແຫ່ງທຸກ" ຈຶ່ງເປັນຜູ້ປາສະຈາກອຸປະທິ ລຸດພົ້ນແລ້ວໃນທຳເປັນທີ່ສິ້ນໄປແຫ່ງອຸປະທິ ຈັກນ້ອມກາຍຫຼືປ່ອຍຈິດໄປໃນອຸປະທິ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ເຈົ້າສຸນັກຂັດຕະ ລິດສະຫວິບຸດມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ສຸນັກຂັດຕະສູດທີ ໕ ຈົບ**

# ໖. ອາເນນຊະສັບປາຍະສູດ

## ວ່າດ້ວຍປະຕິປະທາອັນເປັນສັບປາຍະແກ່ອາເນນຊະສະມາບັດ

[໖໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນິຄົມຂອງຊາວກຸຣຸຊື່ ກຳມາສະທຳມະແຄວ້ນກຸຣຸ ສະໄໝນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

"ພິກຂຸ ທັງຫຼາຍ ກາມບໍ່ທ່ຽງ ເປັນຂອງວ່າງເປົ່າ ເປັນຂອງບໍ່ຈິງແທ້ ມີຄວາມເລືອນຫາຍ

ໄປເປັນທຳມະດາ ລັກສະນະຂອງກາມນີ້ ເປັນຄວາມລໍ້ລວງ ເປັນທີ່ຈົ່ມເຖິງຂອງຄົນພານ ກາມທີ່ມີໃນພົບນີ້ ແລະ ກາມທີ່ມີໃນພົບໜ້າ ກາມສັນຍາ (ຄວາມກຳນົດໝາຍໃນກາມ) ທີ່ມີໃນພົບນີ້ ແລະກາມສັນຍາທີ່ມີໃນພົບໜ້າ ທັງ ໔ ປະການນັ້ນ ເປັນບ້ວງແຫ່ງມານ ເປັນວິໄສແຫ່ງມານ ເປັນເຫຍື່ອແຫ່ງມານ ເປັນໂຄຈອນແຫ່ງມານ ໃນກາມນີ້ມີບາບອະກຸສົນທາງໃຈເຫຼົ່ານີ້ ຄື ອະພິດຊາແດ່ ພະຍາບາດແດ່ ສາຣຳພະ (ຄວາມແຂ່ງດີ) ແດ່ ກາມເຫຼົ່ານັ້ນ ຍ່ອມກໍ່ອັນຕະລາຍໃຫ້ແກ່ອະຣິຍະສາວົກຜູ້ຕາມສຶກສາຢູ່ໃນທຳວິໄນນີ້

ອະຣິຍະສາວົກຍ່ອມພິຈາລະນາເຫັນໃນເລື້ອງກາມນັ້ນດັ່ງນີ້ວ່າ "ກາມທີ່ມີໃນພົບນີ້ ແລະ ກາມທີ່ມີໃນພົບໜ້າ ກາມສັນຍາທີ່ມີໃນພົບນີ້ ແລະ ກາມສັນຍາທີ່ມີໃນພົບໜ້າ ທັງ ໔ ປະການນັ້ນ ເປັນບ້ວງແຫ່ງມານ ເປັນວິໄສແຫ່ງມານ ເປັນເຫຍື່ອແຫ່ງມານ ເປັນໂຄຈອນແຫ່ງມານ ໃນກາມນີ້ມີບາບອະກຸສົນທາງໃຈເຫຼົ່ານີ້ ຄື ອະພິດຊາແດ່ ພະຍາບາດແດ່ ສາຣຳພະແດ່ ກາມເຫຼົ່ານັ້ນ ຍ່ອມກໍ່ອັນຕະລາຍໃຫ້ແກ່ອະຣິຍະສາວົກຜູ້ຕາມສຶກສາຢູ່ໃນທຳວິໄນນີ້ ທາງທີ່ດີ ເຮົາຄວນກໍຈະຢູ່ດ້ວຍຈິດອັນໄພບູນເປັນມະຫັກຄະຕະ ອະທິຖານໃຈຄອບງຳໂລກ ຍ້ອນເມື່ອເຮົາຢູ່ດ້ວຍມະຫັກຄະຕະຈິດອັນໄພບູນເປັນມະຫັກຄະຕະ ອະທິຖານໃຈຄອບງຳໂລກຢູ່ ບາບອະກຸສົນທີ່ເກີດທາງໃຈ ຄື ອະພິດຊາແດ່ ພະຍາບາດແດ່ ສາຣຳພະແດ່ ເຫຼົ່ານັ້ນຈັກບໍ່ມີ ຍ້ອນລະອະກຸສົນເຫຼົ່ານັ້ນໄດ້ແລ້ວ ຈິດຂອງເຮົາກໍຈັກເປັນຈິດບໍ່ເລັກໜ້ອຍ ຫາປະມານບໍ່ໄດ້ ແລະເປັນຈິດທີ່ອົບຮົມດີແລ້ວ"

ເມື່ອອະຣິຍະສາວົກນັ້ນ ປະຕິບັດແນວນີ້ແລ້ວ ເປັນຜູ້ຫຼາຍດ້ວຍປະຕິປະທານັ້ນຢູ່ ຈິດຍ່ອມຜ່ອງໃສໃນອາຍະຕະນະ ເມື່ອມີຄວາມຜ່ອງໃສ ອະຣິຍະສາວົກນັ້ນ ຍ່ອມເຂົ້າເຖິງອາເນນຊະສະມາບັດ ຫຼື ນ້ອມໃຈໄປໃນປັນຍາໃນປັດຈຸບັນໄດ້ ເປັນໄປໄດ້ທີ່ຫຼັງຈາກຕາຍແລ້ວ ວິນຍານທີ່ເປັນໄປໃນພົບນັ້ນ ໆ ເພິ່ງເປັນວິນຍານເຂົ້າເຖິງສະພາບຫາຄວາມຫວັ່ນໄຫວບໍ່ໄດ້

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ປະຕິປະທາທີ່ເປັນສັບປາຍະແກ່ອາເນນຊະສະມາບັດ ປະການທີ ໑

[໖໗] ອີກປະການໜຶ່ງ ອະຣິຍະສາວົກພິຈາລະນາເຫັນດັ່ງນີ້ວ່າ "ກາມທີ່ມີໃນພົບນີ້ ແລະ ກາມທີ່ມີໃນພົບໜ້າ ກາມສັນຍາທີ່ມີໃນພົບນີ້ ແລະ ກາມສັນຍາທີ່ມີໃນພົບໜ້າ ຮູບບາງຊະນິດ ແລະຮູບທັງໝົດ ຄື ມະຫາພູຕະຮູບ ໔ ແລະ ຮູບທີ່ອາໄສມະຫາພູຕະຮູບ ໔ ກໍມີຢູ່ ເມື່ອອະຣິຍະສາວົກນັ້ນປະຕິບັດແນວນີ້ແລ້ວ ເປັນຜູ້ຫຼາຍດ້ວຍປະຕິປະທານັ້ນຢູ່ ຈິດຍ່ອມຜ່ອງໃສໃນອາຍະຕະນະ ເມື່ອມີຄວາມຜ່ອງໃສ ອະຣິຍະສາວົກນັ້ນຍ່ອມເຂົ້າເຖິງອາເນນຊະສະມາບັດ ຫຼື ນ້ອມໃຈໄປໃນປັນຍາໃນປັດຈຸບັນໄດ້ ເປັນໄປໄດ້ທີ່ຫຼັງຈາກຕາຍແລ້ວ ວິນຍານທີ່ເປັນໄປໃນພົບນັ້ນ ໆ ເພິ່ງເປັນວິນຍານເຂົ້າເຖິງສະພາບຫາຄວາມຫວັ່ນໄຫວບໍ່ໄດ້

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ປະຕິປະທາທີ່ເປັນສັບປາຍະແກ່ອາເນນຊະສະມາບັດ ປະການທີ ໔

ອີກປະການໜຶ່ງ ອະຣິຍະສາວົກພິຈາລະນາເຫັນດັ່ງນີ້ວ່າ "ກາມທີ່ມີໃນພົບນີ້ ແລະກາມທີ່ມີໃນພົບໜ້າ ກາມສັນຍາທີ່ມີໃນພົບນີ້ ແລະ ກາມສັນຍາທີ່ມີໃນພົບໜ້າ ຮູບທີ່ມີໃນພົບນີ້ ແລະຮູບທີ່ມີໃນພົບໜ້າ ຮູບສັນຍາທີ່ມີໃນພົບນີ້ ແລະຮູບສັນຍາທີ່ມີໃນພົບໜ້າ ທັງ ໔ ປະການ ເປັນຂອງບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນບໍ່ຄວນຍິນດີ ບໍ່ຄວນເວົ້າຊົມ ບໍ່ຄວນຕິດໃຈ" ເມື່ອອະຣິຍະສາວົກນັ້ນປະຕິບັດແນວນີ້ແລ້ວ ເປັນຜູ້ຫຼາຍດ້ວຍປະຕິປະທານັ້ນຢູ່ ຈິດຍ່ອມຜ່ອງໃສໃນອາຍະຕະນະ ເມື່ອມີຄວາມຜ່ອງໃສ ອະຣິຍະສາວົກນັ້ນຍ່ອມເຂົ້າເຖິງອາເນນຊະສະມາບັດ ຫຼື ນ້ອມໃຈໄປໃນປັນຍາໃນປັດຈຸບັນໄດ້ ເປັນໄປໄດ້ທີ່ຫຼັງຈາກຕາຍແລ້ວ ວິນຍານທີ່ເປັນໄປໃນພົບນັ້ນ ໆ ເພິ່ງເປັນວິນຍານເຂົ້າເຖິງສະພາບທາຄວາມຫວັ່ນໄຫວບໍ່ໄດ້

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ປະຕິປະທາທີ່ເປັນສັບປາຍະແກ່ອາເນນຊະສະມາບັດ ປະການທີ່ ໓

[໖໗] ອີກປະການໜຶ່ງ ອະຣິຍະສາວົກພິຈາລະນາເຫັນດັ່ງນີ້ວ່າ "ກາມທີ່ມີໃນພົບນີ້ ແລະກາມທີ່ມີໃນພົບໜ້າ ກາມສັນຍາທີ່ມີໃນພົບນີ້ ແລະ ກາມສັນຍາທີ່ມີໃນພົບໜ້າ ຮູບທີ່ມີໃນພົບນີ້ ແລະຮູບທີ່ມີໃນພົບໜ້າ ຮູບສັນຍາທີ່ມີໃນພົບນີ້ ແລະ ຮູບສັນຍາທີ່ມີໃນພົບໜ້າ ແລະ ອາເນຍະຊະສັນຍາ ສັນຍາທັງໝົດນີ້ຍ່ອມດັບບໍ່ເຫຼືອໃນຊານໃດ ຊານນັ້ນ ຄື ອາກິນຈັນຍາຍະຕະນະຊານ ເປັນຊານອັນສະງົບ ປະນີດ" ເມື່ອອະຣິຍະສາວົກນັ້ນປະຕິບັດແນວນີ້ແລ້ວ ເປັນຜູ້ຫຼາຍດ້ວຍປະຕິປະທານັ້ນຢູ່ ຈິດຍ່ອມຜ່ອງໃສໃນອາຍະຕະນະ ເມື່ອມີຄວາມຜ່ອງໃສ ອະຣິຍະສາວົກນັ້ນຍ່ອມເຂົ້າເຖິງອາກິນຈັນຍາຍະຕະນະສະມາບັດ ຫຼື ນ້ອມໃຈໄປໃນປັນຍາໃນປັດຈຸບັນໄດ້ ເປັນໄປໄດ້ທີ່ຫຼັງຈາກຕາຍໄປແລ້ວ ວິນຍານທີ່ເປັນໄປໃນພົບນັ້ນ ໆ ເພິ່ງເປັນວິນຍານເຂົ້າເຖິງອາກິນຈັນຍາຍະຕະນະພູມ

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ປະຕິປະທາທີ່ເປັນສັບປາຍະແກ່ອາກິນຈັນຍາຍະຕະນະສະມາບັດ ປະການທີ ໑

[໖໘] ອີກປະການໜຶ່ງ ອະຣິຍະສາວົກໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ສິ່ງນີ້ວ່າງຈາກອັດຕາ ຫຼື ສິ່ງທີ່ເນື່ອງດ້ວຍອັດຕາ" ເມື່ອອະຣິຍະສາວົກນັ້ນປະຕິບັດແນວນີ້ແລ້ວ ເປັນຜູ້ຫຼາຍດ້ວຍປະຕິປະທານັ້ນຢູ່ ຈິດຍ່ອມຜ່ອງໃສໃນອາຍະຕະນະ ເມື່ອມີຄວາມຜ່ອງໃສ ອະຣິຍະສາວົກນັ້ນຍ່ອມເຂົ້າເຖິງອາກິນຈັນຍາຍະຕະນະສະມາບັດ ຫຼືນ້ອມໃຈໄປໃນປັນຍາໃນປັດຈຸບັນໄດ້ ເປັນໄປໄດ້ທີ່ຫຼັງຈາກຕາຍແລ້ວ ວິນຍານທີ່ເປັນໄປໃນພົບນັ້ນ ໆ ເພິ່ງເປັນວິນຍານເຂົ້າເຖິງອາກິນຈັນຍາຍະຕະນະພູມ"

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ປະຕິປະທາທີ່ເປັນສັບປາຍະແກ່ອາກິນຈັນຍາຍະຕະນະສະມາບັດ ປະການທີ ໘

[໗໐] ອີກປະການໜຶ່ງ ອະຣິຍະສາວົກພິຈາລະນາເຫັນດັ່ງນີ້ວ່າ "ເຮົາບໍ່ມີໃນທີ່ໃດ ສິ່ງໜ້ອຍໜຶ່ງຂອງໃຜ ໆ ກໍບໍ່ມີໃນເຮົາ ແລະ ສິ່ງໜ້ອຍໜຶ່ງຂອງເຮົາກໍບໍ່ມີຢູ່ໃນທີ່ໃດ ໃນໃຜ ໆ ກໍບໍ່ມີສິ່ງໜ້ອຍໜຶ່ງຢູ່ເລີຍ" ເມື່ອອະຣິຍະສາວົກນັ້ນ ປະຕິບັດແນວນີ້ແລ້ວ ເປັນຜູ້ຫຼາຍດ້ວຍປະຕິປະທານັ້ນຢູ່ ຈິດຍ່ອມຜ່ອງໃສໃນອາຍະຕະນະ ເມື່ອມີຄວາມຜ່ອງໃສ ອະຣິຍະສາວົກນັ້ນຍ່ອມເຂົ້າເຖິງອາກິນຈັນຍາຍະຕະນະສະມາບັດ ຫຼື ນ້ອມໃຈໄປໃນປັນຍາໃນປັດຈຸບັນໄດ້ ເປັນໄປໄດ້ທີ່ຫຼັງຈາກຕາຍແລ້ວ ວິນຍານທີ່ເປັນໄປໃນພົບນັ້ນ ໆ ເພິ່ງເປັນວິນຍານເຂົ້າເຖິງອາກິນຈັນຍາຍະຕະນະພູມ

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ປະຕິປະທາທີ່ເປັນສັບປາຍະແກ່ອາກິນຈັນຍາຍະຕະນະສະມາບັດ ປະການທີ ໙

ອີກປະການໜຶ່ງ ອະຣິຍະສາວົກພິຈາລະນາເຫັນດັ່ງນີ້ວ່າ "ກາມທີ່ມີໃນພົບນີ້ ແລະ ກາມທີ່ມີໃນພົບໜ້າ ກາມສັນຍາທີ່ມີໃນພົບນີ້ ແລະ ກາມສັນຍາທີ່ມີໃນພົບໜ້າ ຣູບທີ່ມີໃນພົບນີ້ ແລະຣູບທີ່ມີໃນພົບໜ້າ ຣູບສັນຍາທີ່ມີໃນພົບນີ້ ແລະຣູບສັນຍາທີ່ມີໃນພົບໜ້າ ອາເນຍະຊະສັນຍາ ແລະອາກິນຈັນຍາຍະຕະນະສັນຍາ ສັນຍາທັງໝົດນີ້ຍ່ອມດັບບໍ່ເຫຼືອໃນຊານໃດ ຊານນັ້ນຄືເນວະສັນຍານາສັນຍາຍະຕະນະສະມາບັດ ເປັນສະມາບັດອັນສະງົບ ປະນີດ" ເມື່ອອະຣິຍະສາວົກນັ້ນປະຕິບັດແນວນີ້ແລ້ວ ເປັນຜູ້ຫຼາຍດ້ວຍປະຕິປະທານັ້ນຢູ່ ຈິດຍ່ອມຜ່ອງໃສໃນອາຍະຕະນະ ເມື່ອມີຄວາມຜ່ອງໃສ ອະຣິຍະສາວົກນັ້ນຍ່ອມເຂົ້າເຖິງເນວະສັນຍານາສັນຍາຍະຕະນະສະມາບັດ ຫຼືນ້ອມໃຈໄປໃນປັນຍາໃນປັດຈຸບັນໄດ້ ເປັນໄປໄດ້ທີ່ຫຼັງຈາກຕາຍແລ້ວ ວິນຍານທີ່ເປັນໄປໃນພົບນັ້ນ ໆ ເພິ່ງເປັນວິນຍານເຂົ້າເຖິງເນວະສັນຍານາສັນຍາຍະຕະນະພູມ

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ປະຕິປະທາທີ່ເປັນສັບປາຍະແກ່ເນວະສັນນາສັນຍາຍະຕະນະສະມາບັດ"

[໗໑] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະອານົນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸໃນພຣະທຳວິໄນນີ້ ປະຕິບັດແນວນີ້ແລ້ວຍ່ອມໄດ້ອຸເປກຂາແນວນີ້ວ່າ "ສິ່ງທີ່ບໍ່ມີກໍບໍ່ເພິ່ງມີແກ່ເຮົາ ຫາກຈັກບໍ່ມີກໍຈັກບໍ່ມີແກ່ເຮົາ ຍ້ອນເຮົາຈະລະສິ່ງທີ່ກຳລັງມີຢູ່ ແລະ ມີມາແລ້ວນັ້ນໄປ" ພິກຂຸນັ້ນ ເພິ່ງປະຣິນິບພານບໍເພິ່ງປະຣິນິບພານຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ພິກຂຸລາງອົງເພິ່ງປະຣິນິບພານໃນອັດຕະພາບນີ້ບາງຮູບບໍ່ເພິ່ງປະຣິນິບພານໃນອັດຕະພາບນີ້"

"ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ພິກຂຸລາງອົງປະຣິນິບພານໃນອັດຕະພາບນີ້ ບາງຮູບບໍ່ປະຣິນິບພານໃນອັດຕະພາບນີ້ ຂ້ານ້ອຍ"

"ພິກຂຸໃນທຳວິໄນນີ້ ປະຕິບັດແນວນີ້ແລ້ວ ຍ່ອມໄດ້ອຸເປກຂາແນວນີ້ວ່າ "ສິ່ງທີ່ບໍ່ມີກໍບໍ່ເພິ່ງມີແກ່ເຮົາ ຫາກຈັກບໍ່ມີກໍຈັກບໍ່ມີແກ່ເຮົາ ຍ້ອນເຮົາຈະລະສິ່ງທີ່ກຳລັງມີຢູ່ ແລະ ມີມາແລ້ວນັ້ນໄປ" ພິກຂຸນັ້ນ ຍ່ອມເພີດເພີນ ຊົມຊື່ນ ຍຶດຕິດອຸເປກຂານັ້ນ ເມື່ອທ່ານເພີດເພີນ ຊົມຊື່ນ ຍຶດຕິດອຸເປກຂານັ້ນຢູ່ ວິນຍານຍ່ອມເປັນອັນອາໄສອຸເປກຂານັ້ນ ຍຶດໝັ້ນອຸເປກຂານັ້ນ ອານົນ ພິກຂຸຜູ້ມີຄວາມຍຶດໝັ້ນຍ່ອມປະຣິນິບພານບໍ່ໄດ້"

"ກໍພິກຂຸນັ້ນ ເມື່ອຍຶດໝັ້ນ ຈະຍຶດໝັ້ນໃນທຳຂໍ້ໃດ ຂ້ານ້ອຍ"

"ຍ່ອມຍຶດໝັ້ນເນວະສັນຍານາສັນຍາຍະຕະນະພູມ"

"ຂ້າແດ່ ພຣະອົງຜູ້ຈະເລີນ ໄດ້ຂ່າວວ່າ ພິກຂຸນັ້ນ ເມື່ອຍຶດໝັ້ນ ຍ່ອມຍຶດໝັ້ນອຸປາທານສ່ວນທີ່ສຳຄັນທີ່ສຸດ ຫຼື ຂ້ານ້ອຍ"

"ອານົນ ພິກຂຸນັ້ນເມື່ອຍຶດໝັ້ນ ຍ່ອມຍຶດໝັ້ນອຸປາທານສ່ວນທີ່ສຳຄັນທີ່ສຸດ ກໍອຸປາທານສ່ວນທີ່ສຳຄັນທີ່ສຸດນີ້ ຄື ເນວະສັນຍານາສັນຍາຍະຕະນະພູມ

[໗໔] ອານົນ ພິກຂຸໃນທຳວິໄນນີ້ປະຕິບັດແນວນີ້ແລ້ວ ຍ່ອມໄດ້ອຸເປກຂາແນວນີ້ວ່າ "ສິ່ງທີ່ບໍ່ມີກໍບໍ່ເພິ່ງມີແກ່ເຮົາ ຫາກຈັກບໍ່ມີກໍຈັກບໍ່ມີແກ່ເຮົາ ຍ້ອນເຮົາຈະລະສິ່ງທີ່ກຳລັງມີຢູ່ແລະມີມາແລ້ວນັ້ນໄປ" ພິກຂຸນັ້ນ ບໍ່ເພີດເພີນ ບໍ່ຊົມຊື່ນ ບໍ່ຍຶດຕິດອຸເປກຂານັ້ນຢູ່ ເມື່ອທ່ານບໍ່ເພີດເພີນ ບໍ່ຊົມຊື່ນ ບໍ່ຍຶດຕິດອຸເປກຂານັ້ນຢູ່ ວິນຍານກໍອາໄສອຸເປກຂານັ້ນ ແລະ ຍຶດໝັ້ນອຸເປກຂານັ້ນບໍ່ໄດ້ ອານນົນ ພິກຂຸຜູ້ບໍ່ມີຄວາມຍຶດໝັ້ນຍ່ອມປະຣິນິບພານໄດ້"

[໗໕] ທ່ານພຣະອານົນໄດ້ຂາບທູນວ່າ "ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ຂ້ານ້ອຍ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າຊົງອາໄສເຫດນີ້ ຈຶ່ງຕັດບອກປະຕິປະທາເຄື່ອງຂ້າມພົ້ນໂອຄະແກ່ຂ້າພຣະອົງທັງຫຼາຍ

ວິໂມກອັນເປັນຂອງພຣະອະຣິຍະ ເປັນແນວໃດ?

ຄື ພິກຂຸຜູ້ເປັນອະຣິຍະສາວົກໃນທຳວິໄນນີ້ ພິຈາລະນາເຫັນດັ່ງນີ້ວ່າ "ກາມທີ່ມີໃນພົບນີ້ ແລະກາມທີ່ມີໃນພົບໜ້າ ກາມສັນຍາທີ່ມີໃນພົບນີ້ ແລະ ກາມສັນຍາທີ່ມີໃນພົບໜ້າ ຮູບທີ່ມີໃນພົບນີ້ ແລະ ຮູບທີ່ມີໃນພົບໜ້າ ຮູບສັນຍາທີ່ມີໃນພົບນີ້ ແລະ ຮູບສັນຍາທີ່ມີໃນພົບໜ້າ ອາເນຍະຊະສັນຍາ ອາກິນຈັນຍາຍະຕະນະສັນຍາ ແລະ ເນວະສັນຍານາສັນຍາຍະຕະນະສັນຍາ ສັກກາຍະມີຢູ່ທີ່ໃດ ນີ້ເປັນສັກກາຍະ ວິໂມກ (ຄວາມລຸດພົ້ນ) ແຫ່ງຈິດຍ້ອນບໍ່ຍຶດໝັ້ນ ນັ້ນຄື

ອະມະຕະ" ອານົນ ເຮົາສະແດງປະຕິປະທາທີ່ເປັນສັບປາຍະແກ່ອາເນນຊະສະມາບັດໄວ້ແລ້ວ ສະແດງປະຕິປະທາທີ່ເປັນສັບປາຍະແກ່ອາກິນຈັນຍາຍະຕະນະສະມາບັດໄວ້ແລ້ວ ສະແດງປະຕິປະທາທີ່ເປັນສັບປາຍະແກ່ເນວະສັນຍານາສັນຍາຍະຕະນະສະມາບັດໄວ້ແລ້ວ ເຮົາອາໄສເຫດນີ້ ສະແດງປະຕິປະທາເຄື່ອງຂ້າມໂອຄະໄວ້ແລ້ວ ສະແດງວິໂມກອັນເປັນຂອງພຣະອະຣິຍະໄວ້ແລ້ວ ດ້ວຍປະການແນວນີ້ ກິດທີ່ສາດສະດາຜູ້ສະແຫວງຫາປະໂຫຍດເກື້ອກູນ ຜູ້ອະນຸເຄາະ ອາໄສຄວາມອະນຸເຄາະແລ້ວເພິ່ງເຮັດແກ່ສາວົກທັງຫຼາຍ ເຮົາກໍໄດ້ເຮັດແລ້ວແກ່ທ່ານທັງຫຼາຍ

ອານົນ ນັ້ນເຫງົ້າໄມ້ ນັ້ນເຮືອນວ່າງ ທ່ານທັງຫຼາຍຈົ່ງເພ່ງຊານ ຢ່າຜະໝາດ ຢ່າໄດ້ເປັນຜູ້ເດືອດຮ້ອນໃນພາຍຫຼັງ ນີ້ເປັນຄຳສອນຂອງເຮົາສຳລັບທ່ານທັງຫຼາຍ"

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດພາສິດນີ້ແລ້ວ ທ່ານພຣະອານົນມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ອາເນນຊະສັບປາຍະສູດທີ ໖ ຈົບ**

# ໗. ຄະນະກະໂມກຄັນລານະສູດ

## ວ່າດ້ວຍພາມຊື່ຄະນະກະໂມກຄັນລານະ

[໗໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ຜາສາດຂອງມິຄາຣະມາຕາ ໃນບຸບພາຣາມ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ຄະນະກະໂມກຄັນລານະພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະໂຄດົມຜູ້ຈະເລີນ ຜາສາດຂອງມິຄາຣະມາຕາຫຼັງນີ້ມີການສຶກສາໂດຍລຳດັບ ມີການກະທຳໂດຍລຳດັບ ມີການປະຕິບັດໂດຍລຳດັບ ຄືໂຄງສ້າງຂັ້ນໄດຊັ້ນລຸ່ມຍ່ອມຜາກົດ ແມ່ນພາມເຫຼົ່ານີ້ກໍມີການສຶກສາໂດຍລຳດັບ ມີການກະທຳໂດຍລຳດັບ ມີການປະຕິບັດໂດຍລຳດັບ ຍ່ອມຜາກົດດ້ວຍການຮ່ຳຮຽນ ແມ່ນນັກຮົບເຫຼົ່ານີ້ກໍມີການສຶກສາໂດຍລຳດັບ ມີການກະທຳໂດຍລຳດັບ ມີການປະຕິບັດໂດຍລຳດັບ ຍ່ອມຜາກົດໃນເລື້ອງການໃຊ້ອາວຸດ ແມ່ນແຕ່ຂ້າພະເຈົ້າທັງຫຼາຍ ຜູ້ເປັນນັກຄຳນວນກໍມີການສຶກສາໂດຍລຳດັບ ມີການກະທຳໂດຍລຳດັບ ມີການ

ປະຕິບັດໂດຍລຳດັບ ຍ່ອມຜາກົດໃນເລື້ອງການນັບຈຳນວນ ຍ້ອນຂ້າພະເຈົ້າທັງຫຼາຍໄດ້ລູກສິດແລ້ວ ເບື້ອງຕົ້ນໃຫ້ເຂົານັບແນວນີ້ວ່າ "ໜຶ່ງ ໝວດໜຶ່ງ ສອງ ໝວດສອງ ສາມ ໝວດສາມ ສີ່ ໝວດສີ່ ຫ້າ ໝວດຫ້າ ຫົກ ໝວດຫົກ ເຈັດ ໝວດເຈັດ ແປດ ໝວດແປດ ເກົ້າ ໝວດເກົ້າ ສິບ ໝວດສິບ" ຍ່ອມໃຫ້ນັບໄປເຖິງຈຳນວນຮ້ອຍ ໃຫ້ນັບໄປເກີນຈຳນວນຮ້ອຍ ແມ່ນສັນໃດ

ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະອົງສາມາດເພື່ອຈະບັນຍັດການສຶກສາໂດຍລຳດັບ ການກະທຳໂດຍລຳດັບ ການປະຕິບັດໂດຍລຳດັບ ໃນພຣະທຳວິໄນແມ່ນນີ້ສັນນັ້ນແດ່ບໍ?"

## ການສຶກສາແລະການປະຕິບັດເປັນຂັ້ນຕອນ

[໗໕] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ເຮົາສາມາດເພື່ອຈະບັນຍັດການສຶກສາໂດຍລຳດັບ ການກະທຳໂດຍລຳດັບ ການປະຕິບັດໂດຍລຳດັບ ໃນທຳວິໄນນີ້ໄດ້ ປຽບຄື ຄົນເຝິກມ້າຜູ້ຊ່ຽວຊານ ໄດ້ມ້າອາຊາໄນໂຕງາມແລ້ວ ເບື້ອງຕົ້ນຢ່າງແນ່ນອນ ຍ່ອມເຝິກໃຫ້ຄຸ້ນກັບການບັງຄັບໃນບັງຫຽນ ຕໍ່ມາຈຶ່ງເຝິກໃຫ້ຄຸ້ນຍິ່ງຂຶ້ນໄປ ແມ່ນສັນໃດ ຕະຖາຄົດກໍຄືກັນສັນນັ້ນ ໄດ້ບຸຣຸດທີ່ຄວນເຝິກແລ້ວ ເບື້ອງຕົ້ນຢ່າງແນ່ນອນ ຍ່ອມແນະນຳແນວນີ້ວ່າ "ມາເທີ້ນ ພິກຂຸ ທ່ານຈົ່ງເປັນຜູ້ມີສິນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນຢູ່ ຈົ່ງເປັນຜູ້ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍເທີ້ນ"

ພາມ ໃນການໃດ ພິກຂຸເປັນຜູ້ມີສິນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ ເປັນຜູ້ເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາໃນສິກຂາບົດທັງຫຼາຍ ໃນການນັ້ນ ຕະຖາຄົດຍ່ອມແນະນຳທ່ານໃຫ້ຍິ່ງຂຶ້ນໄປວ່າ "ມາເທີ້ນ ພິກຂຸ ທ່ານຈົ່ງເປັນຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍ"

ຄື ທ່ານເຫັນຮູບທາງຕາແລ້ວ ຢ່າໂຮມຖື ຢ່າແຍກຖື ຈົ່ງປະຕິບັດເພື່ອສັງລວມຈັກຂຸນຊີ (ອິນຊີຄືຈັກຂຸ) ເຊິ່ງເມື່ອບໍ່ສັງລວມແລ້ວຈະເປັນເຫດໃຫ້ຖືກບາບອະກຸສົນທຳຄືອະພິດຊາ (ຄວາມເພ່ງເລັງຢາກໄດ້ສິ່ງຂອງຂອງເຂົາ) ແລະໂທມະນັດ (ຄວາມທຸກໃຈ)

ຄອບງຳໄດ້ ທ່ານຈົ່ງຖືຮັກສາຈັກຂຸນຊີ ຈົ່ງເຖິງຄວາມສັງລວມໃນຈັກຂຸນຊີ

ທ່ານຟັງສຽງທາງຫູແລ້ວ ຯລຯ<br>
ທ່ານດົມກິ່ນທາງດັງແລ້ວ ຯລຯ<br>
ທ່ານຊີມຣົດທາງລີ້ນແລ້ວ ຯລຯ<br>
ທ່ານຖືກຕ້ອງໂຜດຖັບພະທາງກາຍແລ້ວ ຯລຯ

ທ່ານຮູ້ແຈ້ງທຳມາຣົມທາງໃຈແລ້ວ ຢ່າໂຮມຖື ຢ່າແຍກຖື ຈຶ່ງປະຕິບັດເພື່ອສັງລວມມະນິນຊີ (ອິນຊີຄືມະໂນ) ເຊິ່ງເມື່ອບໍ່ສັງລວມແລ້ວ ຈະເປັນເຫດໃຫ້ຖືກບາບອະກຸສົນທຳ ຄື ອະພິດຊາແລະໂທມະນັດຄອບງຳໄດ້ ທ່ານຈຶ່ງຖືຮັກສາມະນິນຊີ ຈຶ່ງເຖິງຄວາມສັງລວມໃນມະນິນຊີ

ພາມ ໃນການໃດພິກຂຸເປັນຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍແລ້ວ ໃນການນັ້ນ ຕະຖາຄົດຍ່ອມແນະນຳທ່ານໃຫ້ຍິ່ງຂຶ້ນໄປວ່າ "ມາເທີ້ນ ພິກຂຸ ທ່ານຈົ່ງເປັນຜູ້ຮູ້ປະມານໃນການບໍຣິໂພກອາຫານ ຄື ທ່ານເພິ່ງພິຈາລະນາໂດຍແຍບຄາຍແລ້ວສັນອາຫານ ບໍ່ແມ່ນເພື່ອຫຼິ້ນ ບໍ່ແມ່ນເພື່ອມົວເມົາ ບໍ່ແມ່ນເພື່ອປະດັບ ບໍ່ແມ່ນເພື່ອຕົກແຕ່ງ ແຕ່ສັນອາຫານພຽງເພື່ອຄວາມດຳລົງຢູ່ໄດ້ແຫ່ງກາຍນີ້ ເພື່ອໃຫ້ກາຍນີ້ເປັນໄປໄດ້ ເພື່ອກຳຈັດຄວາມບຽດບຽນ ເພື່ອອະນຸເຄາະພົມມະຈັນດ້ວຍຄິດເຫັນວ່າ "ເຮົາຈັກກຳຈັດເວທະນາເກົ່າ ແລະ ຈັກບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ຄວາມດຳເນີນໄປແຫ່ງກາຍ ຄວາມບໍ່ມີໂທດ ແລະການຢູ່ຜາສຸກ ຈັກມີແກ່ເຮົາ"

ພາມ ໃນການໃດພິກຂຸເປັນຜູ້ຮູ້ປະມານໃນການບໍຣິໂພກອາຫານ ໃນການນັ້ນ ຕະຖາຄົດຍ່ອມແນະນຳທ່ານໃຫ້ຍິ່ງຂຶ້ນໄປວ່າ "ມາເທີ້ນ ພິກຂຸ ທ່ານຈົ່ງເປັນຜູ້ປະກອບຄວາມພຽນເຄື່ອງຕື່ນຢ່າງຕໍ່ເນື່ອງ ຄື ທ່ານຈົ່ງຊຳຣະຈິດໃຫ້ບໍລິສຸດຈາກທຳທັງຫຼາຍທີ່ເປັນ ເຄື່ອງຂັດຂວາງ ດ້ວຍການຈົງກົມ ດ້ວຍການນັ່ງເມີດມື້ ຈົ່ງຊຳຣະຈິດໃຫ້ບໍລິສຸດຈາກທຳທັງຫຼາຍທີ່ເປັນເຄື່ອງຂັດຂວາງດ້ວຍການຈົງກົມ ດ້ວຍການນັ່ງຕະຫຼອດປະຖົມມະຍາມແຫ່ງຣາຕີ ນອນຄືຣາດຊະສີໂດຍຂ້າງເບື້ອງຂວາ ຊ້ອນຕີນເຫຼື່ອມຕີນ ມີສະຕິສຳປະຊັນຍະ ກຳນົດໃຈພ້ອມຈະລຸກຂຶ້ນຕະຫຼອດມັດຊິມະຍາມແຫ່ງຣາຕີ ຈົ່ງລຸກຂຶ້ນຊຳຣະຈິດໃຫ້ບໍລິສຸດຈາກທຳທັງຫຼາຍ ທີ່ເປັນເຄື່ອງຂັດຂວາງ ດ້ວຍການຈົງກົມ ດ້ວຍການນັ່ງຕະຫຼອດປັດສິມມະຍາມແຫ່ງຣາຕີ"

ພາມ ໃນການໃດພິກຂຸເປັນຜູ້ປະກອບຄວາມພຽນເຄື່ອງຕື່ນຢ່າງຕໍ່ເນື່ອງ ໃນການນັ້ນ ຕະຖາຄົດຍ່ອມແນະນຳທ່ານໃຫ້ຍິ່ງຂຶ້ນໄປວ່າ "ມາເທີ້ນ ພິກຂຸ ທ່ານຈົ່ງເປັນຜູ້ປະກອບດ້ວຍສະຕິສຳປະຊັນຍະ ຄື ທຳຄວາມຮູ້ສຶກໂຕໃນການກ້າວໄປ ການຖອຍກັບ ການແນມເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດແລະຈີວອນ ການສັນ ການດື່ມ ການທຍ້ຳ ການກິນ ການຖ່າຍອຸດຈາຣະ ປັດສາວະ ການຍ່າງ ການຢືນ ການນັ່ງ ການນອນ ການຕື່ນ ການເວົ້າ ການນິ່ງ"

ພາມ ໃນການໃດພິກຂຸເປັນຜູ້ປະກອບດ້ວຍສະຕິສຳປະຊັນຍະ ໃນການນັ້ນ ຕະຖາຄົດຍ່ອມແນະນຳທ່ານໃຫ້ຍິ່ງຂຶ້ນໄປວ່າ "ມາເທີ້ນ ພິກຂຸ ທ່ານຈົ່ງພັກຢູ່ໃນເສນາສະນະອັນງຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູ ເງື້ອມຜາ ຖ້ຳ ປ່າຊ້າ ປ່າຣົກ ກາງແຈ້ງ ກອງເຟືອງ ພິກຂຸນັ້ນພັກຢູ່ເສນາສະນະອັນງຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູ ເງື້ອມຜາ ຖ້ຳ ປ່າຊ້າ ປ່າຣົກ ກາງແຈ້ງ ກອງເຟືອງ ພິກຂຸນັ້ນກັບຈາກບິນທະບາດ ພາຍຫຼັງສັນພັດຕາຫານສຳເລັດແລ້ວ ນັ່ງຂັດສະມາທິ

ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ພິກຂຸນັ້ນ ລະອະພິດຊາໃນໂລກ ມີໃຈປາສະຈາກອະພິດຊາ (ຄວາມເພ່ງເລັງຢາກໄດ້ສິ່ງຂອງຂອງເຂົາ) ຊຳຣະຈິດໃຫ້ບໍລິສຸດຈາກອະພິດຊາ ລະຄວາມມຸ້ງຮ້າຍຄືພະຍາບາດ ມີຈິດບໍ່ພະຍາບາດ ມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ ຊຳຣະຈິດໃຫ້ບໍລິສຸດຈາກຄວາມມຸ້ງຮ້າຍຄືພະຍາບາດ ລະຖີນະມິດທະ (ຄວາມຫົດຫູ່ແລະງ່ວງເຫງົາ) ປາສະຈາກຖີນະມິດທະ ກຳນົດແສງສະຫວ່າງ ມີສະຕິສຳປະຊັນຍະຢູ່ ຊຳຣະຈິດໃຫ້ບໍລິສຸດຈາກຖີນະມິດທະ ລະອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະລຳຄານໃຈ) ເປັນຜູ້ບໍ່ຟຸ້ງຊ່ານ ມີຈິດສະງົບພາຍໃນ ຊຳຣະຈິດໃຫ້ບໍລິສຸດຈາກອຸດທັດຈະກຸກກຸດຈະ ລະວິຈິກິດສາ (ຄວາມລັງເລສົງໄສ) ຂ້າມພົ້ນວິຈິກິດສາໄດ້ແລ້ວ ບໍ່ມີຄວາມສົງໄສໃນກຸສົນທຳທັງຫຼາຍຢູ່ ຈຶ່ງຊຳຣະຈິດໃຫ້ບໍລິສຸດຈາກວິຈິກິດສາໄດ້"

[໑໙] ພິກຂຸນັ້ນ ລະນິວອນ ໕ ນີ້ທີ່ເຮັດໃຫ້ຈິດເສົ້າໝອງບັ່ນທອນກຳລັງປັນຍາ ສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວ ເຂົ້າປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບລະງັບໄປ ເຂົ້າທຸຕິຍະຊານ ຯລຯ ຢູ່ ຍ້ອນປີຕິ ຈາງຄາຍອອກ ມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ເຂົ້າຕະຕິຍະຊານ ຯລຯ ຢູ່ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດ ແລະ ໂທມະນັດດັບໄປກ່ອນ ເຂົ້າຈະຕຸດຖະຊານ ຯລຯ ຢູ່

ພາມ ໃນພິກຂຸທັງຫຼາຍ ຜູ້ເປັນພຣະເສຂະ ຜູ້ຍັງບໍ່ບັນລຸອະຣະຫັຕ ຍັງປາຖະໜາທຳທີ່ກະເສມຈາກໂຍຄະແນວປະເສີດຢູ່ເຫຼົ່ານັ້ນ ເຮົາມີຄຳພ່ຳສອນແນວນີ້ ແຕ່ສຳລັບພິກຂຸຜູ້ເປັນພຣະອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ໑ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ໔ ລຸດພົ້ນແລ້ວຍ້ອນຮູ້ໂດຍຖືກຕ້ອງເຫຼົ່ານັ້ນ ທຳເຫຼົ່ານີ້ຈຶ່ງຈະເປັນໄປເພື່ອຄວາມຢູ່ເປັນສຸກໃນປັດຈຸບັນ ແລະເພື່ອສະຕິສຳປະຊັນຍະແກ່ທ່ານທັງຫຼາຍ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ຄະນະກະໂມກຄັນລານະພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ສາວົກຂອງທ່ານພຣະໂຄດົມທີ່ທ່ານພຣະໂຄດົມສັ່ງສອນຢູ່ແນວນີ້ ພ່ຳສອນຢູ່ແນວນີ້ ສຳເລັດນິບພານອັນເຖິງທີ່ສຸດໂດຍສ່ວນດຽວທຸກພວກຢ່າງແນ່ນອນແມ່ນບໍ? ຫຼືວ່າມີລາງພວກບໍ່ສຳເລັດ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ສາວົກຂອງເຮົາທີ່ເຮົາສັ່ງສອນຢູ່ແນວນີ້ ພ່ຳສອນຢູ່ແນວນີ້ ລາງພວກສຳເລັດນິບພານອັນເຖິງທີ່ສຸດໂດຍສ່ວນດຽວ ລາງພວກບໍ່ສຳເລັດ"

"ອັນໃດນໍ? ເປັນເຫດເປັນປັດໄຈ ທີ່ເປັນເຫດໃຫ້ນິບພານກໍມີຢູ່ ທາງໃຫ້ເຖິງນິບພານກໍມີ

ຢູ່ ທ່ານພຣະໂຄດົມຜູ້ຊັກຊວນກໍມີພະຊົນຢູ່ ແຕ່ສາວົກຂອງທ່ານພຣະໂຄດົມທີ່ທ່ານພຣະໂຄດົມສັ່ງສອນຢູ່ແບວນີ້ ພໍ່າສອນຢູ່ແບວນີ້ ລາງພວກສຳເລັດນິບພານອັນເຖິງທີ່ສຸດໂດຍສ່ວນດຽວ ລາງພວກກັບບໍ່ສຳເລັດ"

[໗໗] "ພາມ ຖ້າເຊັ່ນນັ້ນ ເຮົາຈັກຖາມທ່ານ ໃນເລື້ອງນີ້ ທ່ານຖືກໃຈແບວໃດ ເພິ່ງພະຍາກອນຕອບແບວນັ້ນ

ທ່ານເຂົ້າໃຈຄວາມຂໍ້ນີ້ ວ່າແບວໃດ ຄື ທ່ານເປັນຜູ້ຮູ້ຈັກແລະຊ່ຽວຊານທາງໄປນະຄອນຣາດຊະຄືນີ້ແມ່ນບໍ?"

"ແມ່ນແລ້ວ ທ່ານພຣະໂຄດົມ"

"ພາມ ທ່ານເຂົ້າໃຈຄວາມຂໍ້ນີ້ອີກວ່າແບວໃດ ຄື ມີບຸຣຸດຜູ້ປາຖະໜາຈະໄປນະຄອນຣາດຊະຄືໄດ້ເດີນທາງມາບ່ອນນີ້ ເຂົ້າມາຫາທ່ານແລ້ວຖາມແບວນີ້ວ່າ "ທ່ານຜູ້ຈະເລີນ ຂ້າພະເຈົ້າປາຖະໜາຈະໄປນະຄອນຣາດຊະຄື ຂໍທ່ານຈົ່ງບອກທາງໄປນະຄອນຣາດຊະຄືນັ້ນ ໃຫ້ຂ້າພະເຈົ້າດ້ວຍເທີ້ນ" ທ່ານເພິ່ງບອກເຂົາແບວນີ້ວ່າ "ໜຸ່ມນ້ອຍ ທາງນີ້ໄປສູ່ນະຄອນຣາດຊະຄື ທ່ານຈົ່ງໄປຕາມທາງນີ້ ບໍ່ດົນຫຼາຍ ຈັກເຫັນໝູ່ບ້ານຊື່ນັ້ນ ໄປຕາມທາງນັ້ນອີກ ບໍ່ດົນຈັກເຫັນນິຄົມຊື່ນັ້ນ ໄປຕາມທາງນັ້ນອີກ ບໍ່ດົນແລ້ວ ຈັກເຫັນສວນທີ່ໜ້າອອນຊອນ ປ່າທີ່ໜ້າອອນຊອນ ພາກພື້ນທີ່ໜ້າອອນຊອນ ສະໂບກຂະຣະນີທີ່ໜ້າອອນຊອນຂອງນະຄອນຣາດຊະຄື"

ບຸຣຸດນັ້ນ ທີ່ທ່ານຊີ້ທາງຢູ່ແບວນີ້ ອະທິບາຍໃຫ້ຮູ້ຢູ່ແບວນີ້ ແຕ່ກັບຈືທາງຜິດຍ່າງໄປທາງກົງກັນຂ້າມ

ຕໍ່ມາບຸຣຸດຄົນທີ່ສອງ ປາຖະໜາຈະໄປນະຄອນຣາດຊະຄືໄດ້ເດີນທາງມາບ່ອນນີ້ ເຂົ້າມາຫາທ່ານແລ້ວຖາມແບວນີ້ວ່າ "ທ່ານຜູ້ຈະເລີນ ຂ້າພະເຈົ້າປາຖະໜາຈະໄປນະຄອນຣາດຊະຄື ຂໍທ່ານຈົ່ງບອກທາງໄປນະຄອນຣາດຊະຄືນັ້ນ ໃຫ້ຂ້າພະເຈົ້າດ້ວຍເທີ້ນ" ທ່ານເພິ່ງບອກເຂົາແບວນີ້ວ່າ "ໜຸ່ມນ້ອຍ ທາງນີ້ໄປສູ່ນະຄອນຣາດຊະຄື ທ່ານຈົ່ງໄປຕາມທາງນີ້ ບໍ່ດົນຫຼາຍ ຈັກເຫັນໝູ່ບ້ານຊື່ນັ້ນ ໄປຕາມທາງນັ້ນອີກ ບໍ່ດົນຈັກເຫັນນິຄົມຊື່ນັ້ນ ໄປຕາມທາງນັ້ນອີກ ບໍ່ດົນແລ້ວ ຈັກເຫັນສວນທີ່ໜ້າອອນຊອນ ປ່າທີ່ໜ້າອອນຊອນ ພາກພື້ນທີ່ໜ້າອອນຊອນ ສະໂບກຂະຣະນີທີ່ໜ້າອອນຊອນຂອງນະຄອນຣາດຊະຄື"

ບຸຣຸດນັ້ນ ທີ່ທ່ານຊີ້ທາງຢູ່ແບວນີ້ ອະທິບາຍໃຫ້ຮູ້ຢູ່ແບວນີ້ ແລະເຂົາກໍໄດ້ປະຕິບັດຕາມທີ່ທ່ານຊີ້ບອກບໍ່ມີຜິດ ໄດ້ໄປສູ່ນະຄອນຣາດຊະຄືໂດຍໂດຍປອດໄພ

ພາມ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ນະຄອນຣາດຊະຄືທີ່ມີຢູ່ ທາງໄປນະຄອນຣາດຊະຄືກໍມີຢູ່ ທ່ານຜູ້ບອກກໍຍັງມີຊີວິດຢູ່ ແຕ່ບຸຣຸດທີ່ທ່ານຊີ້ທາງຢູ່ແບວນີ້ ອະທິບາຍໃຫ້ຮູ້ຢູ່ແບວນີ້

ຄົນໜຶ່ງຈື່ທາງຜິດຍ່າງໄປເສຍທາງກົງກັນຂ້າມ ຄົນໜຶ່ງເດີນທາງໄປເຖິງນະຄອນຣາດຊະຄືໂດຍ ໂດຍປອດໄພ"

ພາມຂາບທູນວ່າ "ທ່ານພຣະໂຄດົມ ໃນເລື້ອງນີ້ ຂ້າພະເຈົ້າຈະເຮັດແນວໃດໄດ້ ຂ້າພະເຈົ້າເປັນພຽງແຕ່ຜູ້ບອກທາງ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ຄືກັນສັນນັ້ນ ນິບພານກໍມີຢູ່ ທາງໄປນິບພານກໍມີຢູ່ ເຮົາ (ຕະຖາຄົດ) ຜູ້ຊັກຊວນກໍມີຢູ່ ກໍເມື່ອເປັນແນວນີ້ ສາວົກທັງຫຼາຍຂອງເຮົາທີ່ເຮົາສັ່ງສອນຢູ່ແນວນີ້ ພໍ່າສອນຢູ່ແນວນີ້ ລາງພວກສຳເລັດນິບພານອັນເຖິງທີ່ສຸດໂດຍສ່ວນດຽວ ລາງພວກບໍ່ສຳເລັດ ໃນເລື້ອງນີ້ ເຮົາຈະເຮັດແນວໃດໄດ້ ຕະຖາຄົດກໍເປັນແຕ່ພຽງຜູ້ບອກທາງ"

[໗໙] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ຄະນະກະໂມກຄັນລານະພາມ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ທ່ານພຣະໂຄດົມ ບຸກຄົນຜູ້ບໍ່ມີສັດທາປະສົງຈະລ້ຽງຊີວິດ ອອກຈາກເຮືອນບວດເປັນບັນພະຊິດ ເປັນຜູ້ໂອ້ອວດ ມີມານຍາ ຂີ້ສໍ້ ຟຸ້ງຊ່ານ ຖືໂຕ ໂລເລ ກັບກອກ ປາກບໍ່ຂອບ ເວົ້າພໍ່າເພື້ອ ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ ບໍ່ຮູ້ປະມານໃນການບໍຣິໂພກອາຫານ ບໍ່ປະກອບຄວາມພຽນເປັນເຄື່ອງຕື່ນຢ່າງຕໍ່ເນື່ອງ ບໍ່ນຳພາໃນຄວາມເປັນສະມະນະ ບໍ່ມີຄວາມເຄົາລົບແນວຈິງໃຈໃນສິກຂາ ມັກຫຼາຍ ຫຍ່ອນຍານໄປ ເປັນຜູ້ນຳໃນໂອກກະມະນະທຳ°ຖືເບົາໃນປະວິເວກ (ຄວາມສະຫງັດ)ຂີ້ຄ້ານ ແນມຂ້າມຄວາມພຽນ ຫຼົງລືມສະຕິ ບໍ່ມີສຳປະຊັນຍະ ມີຈິດບໍ່ຕັ້ງໝັ້ນ ມີຈິດກວັດແກວ່ງ ມີປັນຍາທຶບ ເປັນດັ່ງຄົນໜວກແລະຄົນກືກ ທ່ານພຣະໂຄດົມຍ່ອມຢູ່ຮ່ວມກັບຄົນເຫຼົ່ານັ້ນບໍ່ໄດ້

ສ່ວນກຸນລະບຸດຜູ້ມີສັດທາ ອອກຈາກເຮືອນບວດເປັນບັນພະຊິດ ເປັນຜູ້ບໍ່ໂອ້ອວດ ບໍ່ມີມາຍາ ບໍ່ຂີ້ສໍ້ ບໍ່ຟຸ້ງຊ່ານ ບໍ່ຖືໂຕ ບໍ່ໂລເລ ບໍ່ປາກບໍ່ຂອບ ບໍ່ເວົ້າພໍ່າເພື້ອ ຄຸ້ມຄອງທະວານໃນອິນຊີທັງຫຼາຍ ຮູ້ປະມານໃນການບໍຣິໂພກອາຫານ ປະກອບຄວາມພຽນເຄື່ອງຕື່ນຢ່າງຕໍ່ເນື່ອງ ນຳພາໃນຄວາມເປັນສະມະນະ ມີຄວາມເຄົາລົບແນວຈິງໃຈໃນສິກຂາ ບໍ່ມັກຫຼາຍ ບໍ່ຫຍ່ອນຍານ ຖືເບົາໃນໂອກກະມະນະທຳ ເປັນຜູ້ນຳໃນປະວິເວກ ຜາຣົບຄວາມພຽນ ອຸທິດກາຍແລະໃຈ ມີສະຕິໝັ້ນຄົງ ມີສຳປະຊັນຍະ ມີຈິດຕັ້ງໝັ້ນ ມີຈິດແນ່ວແນ່ ມີປັນຍາ ບໍ່ເປັນດັ່ງຄົນໜວກແລະຄົນກືກ ທ່ານພຣະໂຄດົມຜູ້ຈະເລີນຍ່ອມຢູ່ຮ່ວມກັບກຸນລະບຸດເຫຼົ່ານັ້ນໄດ້ບັນດາຮາກໄມ້ຫອມ ບັນດິດຍ້ອງຍໍເກດສະໜາວ່າເປັນເລີດ ບັນດາໄມ້ທີ່ມີແກ່ນຫອມ ບັນດິດຍ້ອງຍໍແກ່ນຈັນແດງວ່າເປັນເລີດ ບັນດາໄມ້ທີ່ມີດອກຫອມ ບັນດິດຍ້ອງຍໍດອກມະລິວ່າເປັນເລີດ ແມ່ນສັນໃດ ຄຳສັ່ງສອນຂອງທ່ານພຣະໂຄດົມ ກໍຄືກັນສັນນັ້ນ ຈັດວ່າປະເສີດກວ່າອັດຊະທຳ໋ທັງຫຼາຍ

ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະອົງຊົງປະກາດທຳແຈ້ງຊັດ ໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນບ່ອນມືດ ດ້ວຍຕັ້ງໃຈວ່າ "ຄົນມີຕາດີຈະເຫັນຮູບໄດ້" ຂ້າພຣະອົງນີ້ຂໍເຖິງທ່ານພຣະໂຄດົມ ພ້ອມທັງພຣະທຳແລະພຣະສົງວ່າເປັນສະຣະນະ ຂໍທ່ານພຣະໂຄດົມໂຜດຊົງຈຳຂ້າພຣະອົງໄວ້ວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" ດັ່ງນີ້ແລ

**ຄະນະກະໂມກຄັນລານະສູດທີ ໗ ຈົບ**

# ໘. ໂຄປະກະໂມກຄັນລານະສູດ

## ວ່າດ້ວຍພາມຊື່ໂຄປະກະໂມກຄັນລານະ

[໗໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ເມື່ອພຣະຜູ້ມີພຣະພາກເຈົ້າປະຣິນິບພານແລ້ວບໍ່ດົນ ທ່ານພຣະອານົນພັກຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ສະໄໝນັ້ນແລ ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ກະສັດແຄວັ້ນມະຄົດ ຊົງຣະແວງພຣະເຈົ້າປັດໂຊດ ຈຶ່ງຮັບສັ່ງໃຫ້ປະຕິສັງຂອນນະຄອນຣາດຊະຄຶ

ເມື່ອເວລາເຊົ້າ ທ່ານພຣະອານົນຄອງອັນຕະຣະວາສົກຖືບາດ ແລະ ຈີວອນ ເຂົ້າໄປບິນທະບາດໃນເມືອງຣາດຊະຄຶ ໄດ້ຄິດແນວນີ້ວ່າ "ຍັງເຊົ້າເກີນໄປທີ່ຈະທ່ຽວບິນທະບາດໃນນະຄອນຣາດຊະຄຶ ທາງທີ່ດີ ເຮົາເພິ່ງເຂົ້າໄປຫາໂຄປະກະໂມກຄັນລານະພາມເຖິງທີ່ທຳງານ" ແລ້ວເຂົ້າໄປສູ່ທີ່ນັ້ນ

ໂຄປະກະໂມກຄັນລານະພາມ ເຫັນທ່ານພຣະອານົນຍ່າງມາແຕ່ໄກ ຈຶ່ງໄດ້ກ່າວກັບທ່ານພຣະອານົນວ່າ "ຂໍເຊີນທ່ານພຣະອານົນເຂົ້າມາເທີ້ນ ຂໍຕ້ອນຮັບ ດົນ ໆ ທ່ານພຣະອານົນຈະມີເວລາມາທີ່ນີ້ ຂໍເຊີນທ່ານພຣະອານົນຈົ່ງນັ່ງເທີ້ນ ອາສະນະນີ້ປູລາດໄວ້ແລ້ວ"

ທ່ານພຣະອານົນໄດ້ນັ່ງເທິງອາສະນະທີ່ປູລາດໄວ້ແລ້ວ ສ່ວນໂຄປະກະໂມກຄັນລານະພາມເລືອກນັ່ງຢູ່ບ່ອນສົມຄວນແຫ່ງໃດແຫ່ງໜຶ່ງເຊິ່ງຕ່ຳກວ່າ ໄດ້ກ່າວກັບທ່ານພຣະອານົນວ່າ "ທ່ານພຣະອານົນ ມີພິກຂຸຈັກອົງໜຶ່ງບໍທີ່ປະກອບດ້ວຍທຳຄົບທຸກຂໍ້ທຸກປະການ ຄືທີ່ທ່ານພຣະໂຄ

ດົມຜູ້ເປັນພຣະອະຣະຫັນຕະ ສໍາມາສໍາພຸດທະເຈົ້າພຣະອົງນັ້ນ ຊົງປະກອບພ້ອມແລ້ວ"

ທ່ານພຣະອານົນກ່າວວ່າ "ພາມ ບໍ່ມີພິກຂຸຈັກອົງໜຶ່ງເລີຍທີ່ປະກອບດ້ວຍທໍາຄົບທຸກຂໍ້ທຸກປະການ ຄືທີ່ພຣະຜູ້ມີພຣະພາກເຈົ້າຜູ້ເປັນພຣະອະຣະຫັນຕະ ສໍາມາສໍາພຸດທະເຈົ້າພຣະອົງນັ້ນຊົງປະກອບພ້ອມແລ້ວ ຍ້ອນພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງຍັ່ງມັກທີ່ຍັງບໍ່ອຸບັດໃຫ້ອຸບັດ ຊົງຍັ່ງມັດທີ່ຍັງບໍ່ເກີດໃຫ້ເກີດ ຕັດບອກມັກທີ່ບໍ່ມີໃຜບອກໄດ້ ຊົງຮູ້ປະຈັກມັກ ຊົງຮູ້ແຈ້ງມັກ ຊົງສະຫຼາດໃນມັກ ສ່ວນສາວົກທັງຫຼາຍ ໃນບັດນີ້ເປັນຜູ້ດໍາເນີນຕາມມັກໃນພາຍຫຼັງ ຈຶ່ງປະກອບພ້ອມຢູ່" ເລື້ອງນີ້ທີ່ທ່ານພຣະອານົນ ໄດ້ສົນທະນາກັບໂຄປະກະໂມກຄັນລານະພາມຄ້າງໄວ້

ຂະນະນັ້ນ ວັດສະກາຣະພາມມະຫາອໍາມາດແຫ່ງແຄວັ້ນມະຄົດ ທ່ຽວກວດຮາດຊະການໃນນະຄອນຮາດຊະຄຶ ໄດ້ເຂົ້າໄປຫາທ່ານພຣະອານົນເຖິງທີ່ທໍາງານຂອງໂຄປະກະໂມກຄັນລານະພາມ ແລ້ວໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນສົມຄວນ ໄດ້ກ່າວກັບທ່ານພຣະອານົນວ່າ "ທ່ານພຣະອານົນ ບັດນີ້ ພຣະຜູ້ເປັນເຈົ້ານັ່ງສົນທະນາກັນດ້ວຍເລື້ອງອັນໃດບໍ? ແລະ ທ່ານທັງສອງໄດ້ສົນທະນາເລື້ອງອັນໃດຄ້າງໄວ້"

ທ່ານພຣະອານົນກ່າວວ່າ "ພາມ ໃນເລື້ອງນີ້ ໂຄປະກະໂມກຄັນລານະພາມໄດ້ກ່າວກັບອາຕະມາພາບແນວນີ້ວ່າ "ທ່ານພຣະອານົນ ມີພິກຂຸຈັກອົງໜຶ່ງບໍ ທີ່ປະກອບດ້ວຍທໍາໆຄົບທຸກຂໍ້ທຸກປະການ ຄືທີ່ທ່ານພຣະໂຄດົມຜູ້ເປັນພຣະອະຣະຫັນຕະ ສໍາມາສໍາພຸດທະເຈົ້າພຣະອົງນັ້ນຊົງປະກອບພ້ອມແລ້ວ"

ເມື່ອໂຄປະກະໂມກຄັນລານະພາມກ່າວແນວນີ້ແລ້ວ ອາຕະມາພາບໄດ້ຕອບວ່າ "ພາມ ບໍ່ມີພິກຂຸຈັກອົງໜຶ່ງເລີຍທີ່ປະກອບດ້ວຍທໍາຄົບທຸກຂໍ້ທຸກປະການ ຄືທີ່ພຣະຜູ້ມີພຣະພາກເຈົ້າຜູ້ເປັນພຣະອະຣະຫັນຕະ ສໍາມາສໍາພຸດທະເຈົ້າພຣະອົງນັ້ນ ຊົງປະກອບພ້ອມແລ້ວ ຍ້ອນພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງຍັງມັກທີ່ຍັງບໍ່ອຸບັດໃຫ້ອຸບັດ ຊົງຍັງມັກທີ່ຍັງບໍ່ເກີດໃຫ້ເກີດ ຕັດບອກມັກທີ່ບໍ່ມີໃຜບອກໄດ້ ຊົງຮູ້ປະຈັກມັກ ຊົງຮູ້ແຈ້ງມັກ ຊົງສະຫຼາດໃນມັກ ສ່ວນສາວົກທັງຫຼາຍໃນບັດນີ້ ເປັນຜູ້ດໍາເນີນຕາມມັກໃນພາຍຫຼັງຈຶ່ງປະກອບພ້ອມຢູ່"

ເລື້ອງນີ້ແລ ທີ່ອາຕະມາພາບໄດ້ສົນທະນາກັບໂຄປະກະໂມກຄັນລານະພາມຄ້າງໄວ້ ກໍພໍດີທ່ານມາເຖິງ"

[໗໐] ວັດສະກາຣະພາມຖາມວ່າ "ທ່ານພຣະອານົນ ມີພິກຂຸຈັກອົງໜຶ່ງບໍ? ທີ່ທ່ານພຣະໂຄດົມພຣະອົງນັ້ນຊົງແຕ່ງຕັ້ງໄວ້ວ່າ "ເມື່ອເຮົາລ່ວງລັບໄປ ພິກຂຸອົງນີ້ ຈັກເປັນທີ່ເພິ່ງຂອງທ່ານທັງຫຼາຍ" ເຊິ່ງພຣະຜູ້ເປັນເຈົ້າເພິ່ງເຂົ້າໄປຫາໄດ້ໃນບັດນີ້"

ທ່ານພຣະອານົນຕອບວ່າ "ພາມ ບໍ່ມີພິກຂຸຈັກອົງໜຶ່ງເລີຍ ທີ່ພຣະຜູ້ມີພຣະພາກຜູ້ຊົງຮູ້

ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຊົງແຕ່ງຕັ້ງໄວ້ວ່າ "ເມື່ອເຮົາລ່ວງລັບໄປ ພິກຂຸອົງນີ້ຈັກເປັນທີ່ເພິ່ງຂອງທ່ານທັງຫຼາຍ" ເຊິ່ງອາຕະມາພາບທັງຫຼາຍຈະເພິ່ງເຂົ້າໄປຫາໄດ້ໃນບັດນີ້"

"ທ່ານພຣະອານົນ ມີພິກຂຸຈັກອົງໜຶ່ງບໍ່ທີ່ສົງສົມມຸດ ຄືພິກຂຸທີ່ພິກຂຸຜູ້ເປັນເຖຣະຈຳນວນຫຼາຍແຕ່ງຕັ້ງໄວ້ວ່າ "ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດລ່ວງລັບໄປ ພິກຂຸອົງນີ້ຈັກເປັນທີ່ເພິ່ງຂອງເຮົາທັງຫຼາຍ" ເຊິ່ງພຣະຜູ້ເປັນເຈົ້າທັງຫຼາຍ ເພິ່ງເຂົ້າໄປຫາໄດ້ໃນບັດນີ້"

"ພາມ ບໍ່ມີພິກຂຸຈັກອົງໜຶ່ງເລີຍທີ່ສົງສົມມຸດ ຄືພິກຂຸທີ່ພິກຂຸຜູ້ເປັນເຖຣະຈຳນວນຫຼາຍແຕ່ງຕັ້ງໄວ້ວ່າ "ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດລ່ວງລັບໄປ ພິກຂຸອົງນີ້ຈັກເປັນທີ່ເພິ່ງຂອງເຮົາທັງຫຼາຍ" ເຊິ່ງອາຕະມາພາບທັງຫຼາຍເພິ່ງເຂົ້າໄປຫາໄດ້ໃນບັດນີ້"

"ທ່ານພຣະອານົນ ກໍເມື່ອບໍ່ມີທີ່ເພິ່ງແນວນີ້ ອັນໃດນໍ? ເປັນເຫດແຫ່ງຄວາມສາມັກຄີກັນໂດຍທຳ"

"ພາມ ອາຕະມາພາບທັງຫຼາຍບໍ່ແມ່ນຄົນບໍ່ມີທີ່ເພິ່ງ ອາຕະມາພາບທັງຫຼາຍເປັນຄົນມີທີ່ເພິ່ງ ຄື ມີທຳເປັນທີ່ເພິ່ງ"

ວັດສະກາຣະພາມກ່າວວ່າ "ທ່ານພຣະອານົນ ເມື່ອຂ້າພະເຈົ້າຖາມທ່ານພຣະອານົນດັ່ງນີ້ວ່າ "ມີພິກຂຸຈັກອົງໜຶ່ງບໍ? ທີ່ທ່ານພຣະໂຄດົມພຣະອົງນັ້ນຊົງແຕ່ງຕັ້ງໄວ້ວ່າ "ເມື່ອເຮົາລ່ວງລັບໄປ ພິກຂຸອົງນີ້ຈັກເປັນທີ່ເພິ່ງຂອງທ່ານທັງຫຼາຍ" ເຊິ່ງພຣະຜູ້ເປັນເຈົ້າທັງຫຼາຍ ເພິ່ງເຂົ້າໄປຫາໄດ້ໃນບັດນີ້" ທ່ານກໍຕອບວ່າ "ພາມ ບໍ່ມີພິກຂຸຈັກອົງໜຶ່ງເລີຍທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຊົງແຕ່ງຕັ້ງໄວ້ວ່າ "ເມື່ອເຮົາລ່ວງລັບໄປແລ້ວ ພິກຂຸອົງນີ້ ຈັກເປັນທີ່ເພິ່ງຂອງທ່ານທັງຫຼາຍ" ເຊິ່ງອາຕະມາພາບທັງຫຼາຍເພິ່ງເຂົ້າໄປຫາໄດ້ໃນບັດນີ້"

ເມື່ອຂ້າພະເຈົ້າຖາມທ່ານວ່າ "ມີພິກຂຸຈັກອົງໜຶ່ງບໍ່ທີ່ສົງສົມມຸດ ຄືພິກຂຸທີ່ພິກຂຸຜູ້ເປັນເຖຣະຈຳນວນຫຼາຍແຕ່ງຕັ້ງໄວ້ວ່າ "ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດລ່ວງລັບໄປ ພິກຂຸອົງນີ້ຈັກເປັນທີ່ເພິ່ງຂອງເຮົາທັງຫຼາຍ" ເຊິ່ງພຣະຜູ້ເປັນເຈົ້າທັງຫຼາຍເພິ່ງເຂົ້າໄປຫາໄດ້ໃນບັດນີ້" ທ່ານກໍຕອບວ່າ "ພາມ ບໍ່ມີພິກຂຸຈັກອົງໜຶ່ງເລີຍທີ່ສົງສົມມຸດ ຄືພິກຂຸທີ່ພິກຂຸຜູ້ເປັນເຖຣະຈຳນວນຫຼາຍແຕ່ງຕັ້ງໄວ້ວ່າ "ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດລ່ວງລັບໄປ ພິກຂຸອົງນີ້ຈັກເປັນທີ່ເພິ່ງຂອງເຮົາທັງຫຼາຍ" ເຊິ່ງອາຕະມາພາບທັງຫຼາຍເພິ່ງເຂົ້າໄປຫາໄດ້ໃນບັດນີ້"

ແລະເມື່ອຂ້າພະເຈົ້າຖາມທ່ານວ່າ "ກໍເມື່ອບໍ່ມີທີ່ເພິ່ງແນວນີ້ ອັນໃດນໍ?ເປັນເຫດແຫ່ງ

ຄວາມສາມັກຄີໂດຍທຳ" ທ່ານກໍຕອບວ່າ "ພາມ ອາຕະມາພາບທັງຫຼາຍບໍ່ແມ່ນເປັນຄົນບໍ່ມີທີ່ເພິ່ງ ອາຕະມາພາບທັງຫຼາຍເປັນຄົນມີທີ່ເພິ່ງ ຄືມີທຳເປັນທີ່ເພິ່ງ"

ທ່ານພຣະອານົນ ກໍຄຳທີ່ພຣະຜູ້ເປັນເຈົ້າກ່າວມາແລ້ວນີ້ ຂ້າພະເຈົ້າຈະເພິ່ງເຂົ້າໃຈເນື້ອຄວາມໄດ້ແນວໃດ?"

[໗໑] "ມີຢູ່ ພາມ ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດຈ້າພຣະອົງນັ້ນ ຊົງບັນຍັດສິກຂາບົດ ຊົງສະແດງປາຕິໂມກແກ່ພິກຂຸທັງຫຼາຍ ທຸກມື້ອຸໂປສົດ ອາຕະມາພາບທໍທີ່ມີຢູ່ນັ້ນ ຈະເຂົ້າໄປອາໄສຊົງເຂດແຫ່ງໜຶ່ງຢູ່ ທຸກອົງຈະປະຊຸມຮ່ວມກັນແລ້ວເຊີນພິກຂຸອົງທີ່ສູດປາຕິໂມກໄດ້ໃຫ້ສູດ ຖ້າຂະນະສູດປາຕິໂມກ ມີພິກຂຸຕ້ອງອາບັດ ມີໂທດທີ່ລ່ວງລະເມີດຢູ່ ອາຕະມາພາບທັງຫຼາຍຈະໃຫ້ທ່ານເຮັດຕາມທຳ ຕາມພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຊົງພ່ຳສອນໄວ້

ໄດ້ຂ່າວວ່າ ພິກຂຸຜູ້ຈະເລີນທັງຫຼາຍ ບໍ່ໄດ້ໃຊ້ໃຫ້ອາຕະມາພາບທັງຫຼາຍເຮັດ ທຳໃຊ້ໃຫ້ອາຕະມາພາບທັງຫຼາຍເຮັດ"

"ທ່ານພຣະອານົນ ມີພິກຂຸຈັກອົງໜຶ່ງບໍ່? ທີ່ພຣະຜູ້ເປັນເຈົ້າທັງຫຼາຍສັກກາຣະ ເຄົາລົບນັບຖື ບູຊາ ແລ້ວເຂົ້າໄປອາໄສຢູ່ໄດ້ໃນບັດນີ້"

"ມີຢູ່ ພິກຂຸອົງໜຶ່ງທີ່ອາຕະມາພາບທັງຫຼາຍສັກກາຣະ ເຄົາລົບ ນັບຖື ບູຊາ ແລ້ວເຂົ້າໄປອາໄສຢູ່ໄດ້ໃນບັດນີ້"

"ທ່ານພຣະອານົນ ເມື່ອຂ້າພະເຈົ້າຖາມທ່ານວ່າ "ມີພິກຂຸຈັກອົງໜຶ່ງບໍ່ທີ່ທ່ານພຣະໂຄດົມພຣະອົງນັ້ນຊົງແຕ່ງຕັ້ງໄວ້ວ່າ "ເມື່ອເຮົາລ່ວງລັບໄປ ພິກຂຸອົງນີ້ຈັກເປັນທີ່ເພິ່ງຂອງທ່ານທັງຫຼາຍ" ເຊິ່ງພຣະຜູ້ເປັນເຈົ້າເພິ່ງເຂົ້າໄປຫາໄດ້ໃນບັດນີ້" ທ່ານກໍຕອບວ່າ "ພາມ ບໍ່ມີພິກຂຸຈັກອົງໜຶ່ງເລີຍທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດຈ້າພຣະອົງນັ້ນຊົງແຕ່ງຕັ້ງໄວ້ວ່າ "ເມື່ອເຮົາລ່ວງລັບໄປ ພິກຂຸອົງນີ້ຈັກເປັນທີ່ເພິ່ງຂອງທ່ານທັງຫຼາຍ" ເຊິ່ງອາຕະມາພາບທັງຫຼາຍເພິ່ງເຂົ້າໄປຫາໄດ້ໃນບັດນີ້"

ເມື່ອຂ້າພະເຈົ້າຖາມທ່ານວ່າ "ມີພິກຂຸຈັກອົງໜຶ່ງບໍ່ທີ່ສົງສົມມຸດ ຄືພິກຂຸທີ່ພິກຂຸຜູ້ເປັນເຖຣະຈຳນວນຫຼາຍແຕ່ງຕັ້ງໄວ້ວ່າ "ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດລ່ວງລັບໄປ ພິກຂຸອົງນີ້ຈັກເປັນທີ່ເພິ່ງຂອງເຮົາທັງຫຼາຍ" ເຊິ່ງພຣະຜູ້ເປັນເຈົ້າທັງຫຼາຍເພິ່ງເຂົ້າໄປຫາໄດ້ໃນບັດນີ້" ທ່ານກໍຕອບວ່າ "ພາມ ບໍ່ມີພິກຂຸແມ່ນຈັກອົງໜຶ່ງເລີຍທີ່ສົງສົມມຸດ ຄືພິກຂຸທີ່ພິກຂຸຜູ້ເປັນເຖຣະຈຳນວນຫຼາຍແຕ່ງຕັ້ງໄວ້ວ່າ "ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດລ່ວງລັບໄປ ພິກຂຸອົງນີ້ຈັກເປັນທີ່ເພິ່ງຂອງເຮົາທັງຫຼາຍ" ເຊິ່ງອາຕະມາພາບທັງຫຼາຍເພິ່ງເຂົ້າໄປຫາໄດ້ໃນບັດນີ້"

ເມື່ອຂ້າພະເຈົ້າຖາມທ່ານວ່າ "ມີພິກຂຸຈັກອົງໜຶ່ງບໍ່? ທີ່ພຣະຜູ້ເປັນເຈົ້າທັງຫຼາຍສັກກາຣະ ເຄົາລົບ ນັບຖື ບູຊາ ແລ້ວເຂົ້າໄປອາໄສຢູ່ໄດ້ໃນບັດນີ້" ພຣະຜູ້ເປັນເຈົ້າຕອບວ່າ "ພາມ ມີພິກຂຸຢູ່ອົງໜຶ່ງທີ່ອາຕະມາພາບທັງຫຼາຍສັກກາຣະ ເຄົາລົບ ນັບຖື ບູຊາ ແລ້ວເຂົ້າໄປອາໄສຢູ່ໄດ້ໃນບັດນີ້"

ທ່ານພຣະອານົນ ຄຳທີ່ພຣະຜູ້ເປັນເຈົ້າກ່າວມາແລ້ວນີ້ ຂ້າພະເຈົ້າຈະເພິ່ງເຂົ້າໃຈເນື້ອຄວາມໄດ້ແນວໃດ?"

## ທຳເປັນທີ່ຕັ້ງແຫ່ງຄວາມເຫຼື້ອມໃສ

[໗໔] "ມີຢູ່ ພາມ ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດບອກທຳເປັນທີ່ຕັ້ງແຫ່ງຄວາມເຫຼື້ອມໃສໄວ້ ໑໐

ປະການ ໃນຄະນະຂອງອາຕະມາພາບ ພິກຂຸອົງໃດມີທຳເຫຼົ່ານັ້ນ ອາຕະມາພາບທັງຫຼາຍຍ່ອມສັກກາຣະ ເຄົາລົບ ນັບຖື ບູຊາ ພິກຂຸອົງນັ້ນ ແລ້ວເຂົ້າໄປອາໄສຢູ່ໃນບັດນີ້

ທຳ ໑໐ ປະການ ອັນໃດແດ່
ຄື ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສິນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນຢູ່ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ

໒. ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທັງຫຼາຍທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ປະກາດພົມມະຈັນ ພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ

໓. ເປັນຜູ້ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ໒

໔. ເປັນຜູ້ໄດ້ຊານ ໔ ອັນມີໃນຈິດ ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມຄວາມປາຖະໜາໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ໓

໕. ສະແດງລິດໄດ້ຫຼາຍແບບ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນ

ສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ຜາກົດຫຼືໃຫ້ຫາຍໄປກໍໄດ້ ຊອດຝາ ກຳແພງ ພູໄປໄດ້ບໍ?ຕິດຂັດເໝືອນໄປໃນບ່ອນວ່າງກໍໄດ້ ຜຸດຂຶ້ນຫຼືດຳລົງໃນແຜ່ນດິນເໝືອນໄປໃນນ້ຳກໍໄດ້ ຍ່າງເທິງນ້ຳໂດຍທີ່ນ້ຳບໍ່ແຍກເໝືອນຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາດເໝືອນນົກບິນໄປກໍໄດ້ ໃຊ້ຝາມືລູບຄຳດວງຈັນດວງອາທິດອັນມີຣິດທານຸພາບຫຼາຍກໍໄດ້ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້

໕. ໄດ້ຍິນສຽງ ໒ ຊະນິດ ຄື (໑) ສຽງທິບ (໒) ສຽງມະນຸດ ທັງທີ່ຢູ່ໄກແລະໃກ້ດ້ວຍຫູທິບອັນບໍລິສຸດເໜືອມະນຸດ

໗. ກຳນົດຮູ້ຈິດຂອງສັດອື່ນດ້ວຍຈິດຂອງຕົນ ຄື ຈິດມີຣາຄະກໍຮູ້ແຈ້ງວ່າ "ຈິດມີຣາຄະ" ຫຼືຈິດປາສະຈາກຣາຄະກໍຮູ້ແຈ້ງວ່າ "ຈິດປາສະຈາກຣາຄະ" ຈິດມີໂທສະກໍຮູ້ແຈ້ງວ່າ "ຈິດມີໂທສະ" ຫຼື ຈິດປາສະຈາກໂທສະກໍຮູ້ແຈ້ງວ່າ "ຈິດປາສະຈາກໂທສະ" ຈິດມີໂມຫະກໍຮູ້ແຈ້ງວ່າ "ຈິດມີໂມຫະ" ຫຼືຈິດປາສະຈາກໂມຫະກໍຮູ້ແຈ້ງວ່າ "ຈິດປາສະຈາກໂມຫະ" ຈິດຫົດຫູ່ກໍຮູ້ແຈ້ງວ່າ "ຈິດຫົດຫູ່" ຫຼືຈິດຟຸ້ງຊ່ານກໍຮູ້ແຈ້ງວ່າ "ຈິດຟຸ້ງຊ່ານ" ຈິດເປັນມະຫັກຄະຕະກໍຮູ້ແຈ້ງວ່າ "ຈິດເປັນມະຫັກຄະຕະ" ຫຼືຈິດບໍ່ເປັນມະຫັກຄະຕະກໍຮູ້ແຈ້ງວ່າ "ຈິດບໍ່ເປັນມະຫັກຄະຕະ" ຈິດມີຈິດອື່ນຍິ່ງກວ່າກໍຮູ້ແຈ້ງວ່າ "ຈິດມີຈິດອື່ນຍິ່ງກວ່າ" ຫຼືຈິດບໍ່ມີຈິດອື່ນຍິ່ງກວ່າກໍຮູ້ແຈ້ງວ່າ "ຈິດບໍ່ມີຈິດອື່ນຍິ່ງກວ່າ" ຈິດເປັນສະມາທິກໍຮູ້ແຈ້ງວ່າ "ຈິດເປັນສະມາທິ" ຫຼືຈິດບໍ່ເປັນສະມາທິກໍຮູ້ແຈ້ງວ່າ "ຈິດບໍ່ເປັນສະມາທິ" ຈິດລຸດພົ້ນແລ້ວກໍຮູ້ແຈ້ງວ່າ "ຈິດລຸດພົ້ນແລ້ວ" ຫຼື ຈິດບໍ່ລຸດພົ້ນແລ້ວກໍຮູ້ແຈ້ງວ່າ "ຈິດບໍ່ລຸດພົ້ນແລ້ວ"

໘. ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດວິວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດສັງວັດຕະກັບແລະວິວັດຕະກັບເປັນຈຳນວນຫຼາຍແດ່ ວ່າ "ໃນພົບນັ້ນເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນຈຶ່ງມາເກີດໃນພົບນີ້" ທ່ານຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະຊີວະປະຫວັດແນວນີ້

໙. ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ

ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳ

໑໐. ເຮັດໃຫ້ແຈ້ງຍ້ອນຮູ້ຍິ່ງເອງເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນຫາອາສະວະບໍ່ໄດ້ ຍ້ອນອາສະວະທັງຫຼາຍໝົດໄປ ຈຶ່ງເຂົ້າເຖິງຢູ່ໃນປັດຈຸບັນ

ພາມ ທຳເປັນທີ່ຕັ້ງແຫ່ງຄວາມເຫຼື້ອມໃສ ໑໐ ປະການນີ້ ອັນພຣະຜູ້ມີພຣະພາກຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນຕັດບອກໄວ້ ບັນດາອາຕະມາພາບທັງຫຼາຍ ອົງໃດມີທຳເຫຼົ່ານີ້ ໃນບັດນີ້ ອາຕະມາພາບທັງຫຼາຍ ຍ່ອມສັກກາຣະ ເຄົາລົບ ນັບຖື ບູຊາ ແລ້ວເຂົ້າໄປອາໄສຮູບນັ້ນຢູ່"

[໗໑] ເມື່ອທ່ານພຣະອານົນກ່າວແນວນີ້ແລ້ວ ວັດສະກາຣະພຣາມ ມະຫາອຳມາດແຫ່ງແຄວ້ນມະຄົດ ໄດ້ຮຽກອຸປະນັນທະເສນາບໍດີມາເວົ້າວ່າ "ເສນາບໍດີ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ພຣະຜູ້ເປັນເຈົ້າເຫຼົ່ານີ້ ສັກກາຣະທຳທີ່ຄວນສັກກາຣະ ເຄົາລົບທຳທີ່ຄວນເຄົາລົບ ນັບຖືທຳທີ່ຄວນນັບຖື ບູຊາທຳທີ່ຄວນບູຊາຢູ່ແນວນີ້ ຖ້າຈັ່ງຊັ້ນ ພຣະຜູ້ເປັນເຈົ້າເຫຼົ່ານີ້ ຍ່ອມສັກກາຣະທຳທີ່ຄວນສັກກາຣະ ເຄົາລົບທຳທີ່ຄວນເຄົາລົບ ນັບຖືທຳທີ່ຄວນນັບຖື ບູຊາທຳທີ່ຄວນບູຊາ ຍ້ອນຖ້າພຣະຜູ້ເປັນເຈົ້າເຫຼົ່ານັ້ນບໍ່ເພິ່ງສັກກາຣະ ບໍ່ເພິ່ງເຄົາລົບ ບໍ່ເພິ່ງນັບຖື ບໍ່ເພິ່ງບູຊາທຳນີ້ ເມື່ອເປັນເຊັ່ນນັ້ນ ໃນບັດນີ້ ພຣະຜູ້ເປັນເຈົ້າເຫຼົ່ານັ້ນຈະເພິ່ງສັກກາຣະ ເພິ່ງເຄົາລົບ ເພິ່ງນັບຖື ເພິ່ງບູຊາ ແລ້ວເຂົ້າໄປອາໄສທຳອັນໃດຢູ່ໄດ້"

ຄັ້ງນັ້ນ ວັດສະກາຣະພຣາມ ມະຫາອຳມາດແຫ່ງແຄວ້ນມະຄົດ ຖາມທ່ານພຣະອານົນວ່າ "ກໍເວລານີ້ ທ່ານພຣະອານົນພັກຢູ່ໃສ?"

ທ່ານພຣະອານົນຕອບວ່າ "ເວລານີ້ ອາຕະມາພາບພັກຢູ່ທີ່ພຣະເວລຸວັນ"

"ທ່ານພຣະອານົນ ກໍພຣະເວລຸວັນເປັນທີ່ອອນຊອນ ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນບ່ອນເຮັດວຽກລັບຂອງມະນຸດ ສົມຄວນເປັນທີ່ຫຼີບຫຼີກແມ່ນບໍ?"

"ແມ່ນແລ້ວ ພາມ ພຣະເວລຸວັນເປັນທີ່ອອນຊອນ ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນບ່ອນເຮັດວຽກລັບຂອງມະນຸດ ສົມຄວນເປັນທີ່ຫຼີບຫຼີກ ກໍຍ້ອນມີຜູ້ຖືຮັກສາຄຸ້ມຄອງເຊັ່ນທ່ານ"

"ທ່ານພຣະອານົນ ແທ້ຈິງ ພຣະເວລຸວັນເປັນທີ່ອອນຊອນ ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນບ່ອນເຮັດວຽກລັບຂອງມະນຸດ ສົມຄວນເປັນທີ່ຫຼີບຫຼີກ ກໍຍ້ອນມີພຣະຜູ້ເປັນເຈົ້າທັງຫຼາຍເປັນຜູ້ມີຊານ ແລະເປັນຜູ້ເຂົ້າຊານຢູ່ປະຈຳຕ່າງຫາກ"

ທ່ານພຣະອານົນ ຂ້າພະເຈົ້າຈະຂໍເລົ່າຖວາຍ ສະໄໝໜຶ່ງ ພຣະໂຄດົມຜູ້ຈະເລີນພຣະອົງນັ້ນປະທັບຢູ່ກູຕາຄາຣະສາລາ ປ່າມະຫາວັນ ເຂດນະຄອນເວສາລີ ຄັ້ງນັ້ນແລ ຂ້າພະເຈົ້າເຂົ້າໄປເຝົ້າພຣະໂຄດົມຜູ້ຈະເລີນພຣະອົງນັ້ນ ຮອດບ່ອນຢູ່ກູຕາຄາຣະສາລາ ປ່າມະຫາວັນ ໃນບ່ອນນັ້ນ ພຣະອົງໄດ້ຕັດຊານກະຖາໂດຍອະເນກປະຣິຍາຍ ພຣະອົງເປັນຜູ້ມີຊານ ແລະເປັນຜູ້ເຂົ້າຊານຢູ່ປະຈຳ ແລະຕັດສັນເສີນຊານທັງປວງບໍ?”

[໗໔] “ພາມ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງສັນເສີນຊານທັງປວງກໍບໍ່ແມ່ນ ບໍ່ຊົງສັນເສີນຊານທັງປວງກໍບໍ່ແມ່ນ

ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ບໍ່ຊົງສັນເສີນຊານແບວໃດ?

ຄື ບຸກຄົນລາງຄົນໃນໂລກນີ້

໑. ມີໃຈຖືກກາມລາຄະກຸ້ມຣຸມ ຖືກກາມລາຄະຄອບງຳຢູ່ ແລະບໍ່ຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດ໑ກາມລາຄະທີ່ເກີດຂື້ນແລ້ວ ບຸກຄົນນັ້ນຈຶ່ງເພ່ງ ໝົກມຸ້ນ ຈົດຈໍ່ ຈິນຕະນາການ ເຮັດກາມລາຄະທີ່ນັ້ນໄວ້ພາຍໃນ

໒. ມີໃຈຖືກພະຍາບາດກຸ້ມຣຸມ ຖືກພະຍາບາດຄອບງຳຢູ່ ແລະບໍ່ຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດພະຍາບາດທີ່ເກີດຂື້ນແລ້ວ ບຸກຄົນນັ້ນຈຶ່ງເພ່ງໝົກມຸ້ນ ຈົດຈໍ່ ຈິນຕະນາການ ເຮັດພະຍາບາດທີ່ນັ້ນໄວ້ພາຍໃນ

໓. ມີໃຈຖືກຖີນະມິດທະກຸ້ມຣຸມ ຖືກຖີນະມິດທະຄອບງຳຢູ່ ແລະ ບໍ່ຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດຖີນະມິດທະທີ່ເກີດຂື້ນແລ້ວ ບຸກຄົນນັ້ນຈຶ່ງເພ່ງໝົກມຸ້ນ ຈົດຈໍ່ ຈິນຕະນາການ ເຮັດຖີນະມິດທະທີ່ນັ້ນໄວ້ພາຍໃນ

໔. ມີໃຈຖືກອຸດທັດຈະກຸກກຸດຈະກຸ້ມຣຸມ ຖືກອຸດທັດຈະກຸກກຸດຈະຄອບງຳຢູ່ ແລະບໍ່ຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດອຸດທັດຈະກຸກກຸດຈະທີ່ເກີດຂື້ນແລ້ວ ໒ ບຸກຄົນນັ້ນຈຶ່ງເພ່ງ ໝົກມຸ້ນ ຈົດຈໍ່ ຈິນຕະນາການ ເຮັດອຸດທັດຈະກຸກກຸດຈະທີ່ນັ້ນໄວ້ພາຍໃນ

໕. ມີໃຈຖືກວິຈິກິດສາກຸ້ມຣຸມ ຖືກວິຈິກິດສາຄອບງຳຢູ່ ແລະບໍ່ຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດວິຈິກິດສາທີ່ເກີດຂື້ນແລ້ວ໒ ບຸກຄົນນັ້ນຈຶ່ງເພ່ງ ໝົກມຸ້ນຈົດຈໍ່ ຈິນຕະນາການ ເຮັດວິຈິກິດສາທີ່ນັ້ນໄວ້ພາຍໃນ

ພາມ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ ນບໍ່ຊົງສັນເສີນຊານແບວນີ້

ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງສັນເສີນຊານແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ ສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກ ວິຈານສະງົບລະງັບໄປ ບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປິຕິແລະສຸກອັນເກີດຈາກສະມາທິຢູ່ ບັນລຸຕະຕິຍະຊານ ฯລฯ ບັນລຸຈະຕຸດຖະຊານ ฯລฯ ຢູ່

ພາມ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງສັນເສີນຊານແນວນີ້

"ທ່ານພຣະອານົນ ໄດ້ຂ່າວວ່າ ພຣະໂຄດົມຜູ້ຈະເລີນພຣະອົງນັ້ນ ຊົງຕິຕຽນຊານທີ່ຄວນຕິຕຽນ ຊົງສັນເສີນຊານທີ່ຄວນສັນເສີນ ຖ້າເຊັ່ນນັ້ນ ບັດນີ້ ຂ້າພະເຈົ້າຂໍລາກັບກ່ອນ ຍ້ອນມີກິດມີໜ້າທີ່ທີ່ຈະຕ້ອງເຮັດອີກຫຼາຍ"

"ພາມ ທ່ານຈົ່ງຮູ້ການອັນຄວນໄປ ບັດນີ້ເທີ້ນ"

ລຳດັບນັ້ນ ວັດສະກາຣະພາມ ມະຫາອຳມາດແຫ່ງແຄວ້ນມະຄົດ ຊົມຊື່ນຍິນດີພາສິດຂອງທ່ານພຣະອານົນ ລຸກຈາກບ່ອນນັ່ງແລ້ວຈາກໄປ

ຄັ້ງນັ້ນແລ ເມື່ອວັດສະກາຣະພາມ ມະຫາອຳມາດແຫ່ງແຄວ້ນມະຄົດ ຈາກໄປແລ້ວບໍ່ດົນໂຄປະກະໂມກຄັນລານະພາມໄດ້ກ່າວກັບທ່ານພຣະອານົນວ່າ "ທ່ານພຣະອານົນ ຍັງບໍ່ໄດ້ຕອບບັນຫາທີ່ຂ້າພະເຈົ້າທັງຫຼາຍຖາມເລີຍ"

ທ່ານພຣະອານົນກ່າວວ່າ "ພາມ ເຮົາໄດ້ກ່າວແລ້ວບໍ່ແມ່ນບໍວ່າ "ບໍ່ມີພິກຂຸແມ່ນຈັກອົງໜຶ່ງທີ່ປະກອບດ້ວຍທຳຄົບຖ້ວນທຸກຂໍ້ທຸກປະການ ທີ່ພຣະຜູ້ມີພຣະພາກເຈົ້າຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຊົງປະກອບພ້ອມແລ້ວ ຍ້ອນພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງຍັງມັກທີ່ບໍ່ອຸບັດໃຫ້ອຸບັດ ຊົງຍັງມັກທີ່ຍັງບໍ່ເກີດໃຫ້ເກີດ ຕັດບອກມັກທີ່ບໍ່ມີໃຜບອກໄດ້ ຊົງຮູ້ປະຈັກມັກ ຊົງຮູ້ແຈ້ງມັກ ຊົງສະຫຼາດໃນມັກ ສ່ວນສາວົກທັງຫຼາຍໃນບັດນີ້ເປັນຜູ້ດຳເນີນຕາມມັກໃນພາຍຫຼັງຈຶ່ງປະກອບພ້ອມຢູ່"

**ໂຄປະກະໂມກຄັນລານະສູດທີ ๘ ຈົບ**

# ໙. ມະຫາປຸນນະມະສູດ

## ວ່າດ້ວຍພຣະທຳເທດສະໜາໃນຄືນຈັນເຕັມດວງ ສູດໃຫຍ່

[໗໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ຜາສາດຂອງມິຄາຣະມາຕາ ໃນບຸບພາຣາມ ເຂດນະຄອນສາວັດຖີ ສະໄໝນັ້ນ ໃນມື້ອຸໂປສົດຂຶ້ນ ໑໕ ຄ່ຳ ຄືນດວງຈັນເຕັມດວງ ພຣະຜູ້ມີພຣະພາກເຈົ້າຊົງມີພິກຂຸສົງອ້ອມລ້ອມ ປະທັບນັ່ງຢູ່ກາງແຈ້ງ ຄັ້ງນັ້ນ ພິກຂຸອົງໜຶ່ງລຸກຈາກອາສະນະ ຫົ່ມຈີວອນບ່ຽງບ່າ ປະນົມມືໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຂໍທູນຖາມເຫດແນວໜຶ່ງກັບພຣະອົງ ຖ້າພຣະຜູ້ມີພຣະພາກເຈົ້າຊົງປະທານວະໂອກາດ ທີ່ຈະຕອບບັນຫາແກ່ຂ້າພຣະອົງ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພິກຂຸ ຖ້າເຊັ່ນນັ້ນ ທ່ານຈົ່ງນັ່ງເທິງອາສະນະຂອງຕົນແລ້ວຖາມບັນຫາທີ່ທ່ານຕ້ອງການຈະຖາມມາເທີ້ນ"

### ອຸປາທານຂັນ ໕ ປະການ

[໗໖] ລຳດັບນັ້ນ ພິກຂຸນັ້ນ ນັ່ງເທິງອາສະນະຂອງຕົນແລ້ວໄດ້ທູນຖາມບັນຫາກັບພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ອຸປາທານຂັນ ໕ ປະການນີ້ແມ່ນບໍ ຄື

໑. ຣູປູປາທານະຂັນ (ອຸປາທານຂັນຄືຣູບ)
໒. ເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ)
໓. ສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ)
໔. ສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ)
໕. ວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ)"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພິກຂຸ ອຸປາທານຂັນ ໕ ປະການນີ້ ຄື

໑. ຣູປູປາທານະຂັນ
໒. ເວທະນູປາທານະຂັນ
໓. ສັນຍູປາທານະຂັນ
໔. ສັງຂາຣູປາທານະຂັນ
໕. ວິນຍານູປາທານະຂັນ

## ມູນເຫດແຫ່ງອຸປາທານຂັນ ໕ ປະການ

ພິກຂຸນັ້ນ ຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າວ່າ "ສາທຸ ຂ້ານ້ອຍ" ແລ້ວໄດ້ທູນຖາມບັນຫາຍິ່ງຂຶ້ນໄປວ່າ "ອຸປາທານຂັນ ໕ ປະການນີ້ ມີອັນໃດເປັນມູນເຫດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພິກຂຸ ອຸປາທານຂັນ ໕ ປະການນີ້ ມີສັນທະເປັນມູນເຫດ"໑

"ອຸປາທານກັບອຸປາທານຂັນ ໕ ປະການນັ້ນ ເປັນແນວດຽວກັນ ຫຼື ອຸປາທານເປັນແນວອື່ນຈາກອຸປາທານຂັນ ໕ ປະການ ຂ້ານ້ອຍ"

"ພິກຂຸ ອຸປາທານກັບອຸປາທານຂັນ ໕ ປະການນັ້ນ ເປັນແນວດຽວກັນກໍບໍ່ແມ່ນ ທັງອຸປາທານຂັນເປັນແນວອື່ນຈາກອຸປາທານຂັນ ໕ ປະການກໍບໍ່ແມ່ນ ແຕ່ສັນທະຣາຄະໃນອຸປາທານຂັນ ໕ ປະການນັ້ນ ເປັນໂຕອຸປາທານ"

"ຂ້າແດ່ ພຣະອົງຜູ້ຈະເລີນ ກໍສັນທະຣາຄະຕ່າງ ໆ ໃນອຸປາທານຂັນ ໕ ປະການ ຈະເພິ່ງມີໄດ້ຫຼືບໍ່?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ມີໄດ້ ພິກຂຸ" ແລ້ວໄດ້ຕັດຕໍ່ໄປວ່າ "ພິກຂຸ ບຸກຄົນລາງຄົນໃນໂລກນີ້ມີຄວາມປາຖະໜາແນວນີ້ວ່າ "ໃນອະນາຄົດ ຂໍເຮົາເພິ່ງມີຮູບແນວນີ້ ມີເວທະນາແນວນີ້ ມີສັນຍາແນວນີ້ ມີສັງຂານແນວນີ້ ມີວິນຍານແນວນີ້"

ພິກຂຸ ສັນທະຣາຄະຕ່າງ ໆ ໃນອຸປາທານຂັນ ໕ ປະການ ເພິ່ງມີໄດ້ ດ້ວຍອາການແນວນີ້"

## ເຫດທີ່ຊື່ວ່າຂັນ

ພິກຂຸນັ້ນໄດ້ທູນຖາມວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ດ້ວຍເຫດພຽງທໍ່ໃດຂັນຈຶ່ງຊື່ວ່າຂັນ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພິກຂຸ ຮູບແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ເປັນໄປໃນພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ນີ້ຮຽກວ່າຮູບຂັນ

ເວທະນາແນວໃດແນວໜຶ່ງ ฯລฯ
ສັນຍາແນວໃດແນວໜຶ່ງ ฯລฯ
ສັງຂານແນວໃດແນວໜຶ່ງ ฯລฯ

ວິນຍານແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ເປັນໄປໃນພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ນີ້ຮຽກວ່າວິນຍານຂັນ

ພິກຂຸ ດ້ວຍເຫດພຽງທໍ່ນີ້ ຂັນຈຶ່ງຊື່ວ່າຂັນ"

## ເຫດທີ່ເຮັດໃຫ້ຂັນຜາກົດ

ພິກຂຸນັ້ນໄດ້ທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ? ເປັນເຫດເປັນປັດໄຈເຮັດໃຫ້ຮູບຂັນຜາກົດ ອັນໃດເປັນເຫດເປັນປັດໄຈເຮັດໃຫ້ເວທະນາຂັນຜາກົດ ອັນໃດເປັນເຫດເປັນປັດໄຈເຮັດໃຫ້ສັນຍາຂັນຜາກົດ ອັນໃດເປັນເຫດເປັນປັດໄຈເຮັດໃຫ້ສັງຂານຂັນຜາກົດ ອັນໃດເປັນເຫດເປັນປັດໄຈເຮັດໃຫ້ວິນຍານຂັນຜາກົດ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພິກຂຸ ມະຫາພູຕະ ໔ ເປັນເຫດເປັນປັດໄຈເຮັດໃຫ້ຮູບຂັນຜາກົດ ຜັດສະເປັນເຫດເປັນປັດໄຈເຮັດໃຫ້ເວທະນາຂັນຜາກົດ ຜັດສະເປັນເຫດເປັນປັດໄຈເຮັດໃຫ້ສັນຍາຂັນຜາກົດ ຜັດສະເປັນເຫດເປັນປັດໄຈເຮັດໃຫ້ສັງຂານຂັນຜາກົດ ນາມຮູບເປັນເຫດເປັນປັດໄຈເຮັດໃຫ້ວິນຍານຂັນຜາກົດ"

## ເຫດເກີດສັກກາຍະທິດຖິ

[໗໗] ພິກຂຸນັ້ນ ໄດ້ທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ສັກກາຍະທິດຖິມີໄດ້ແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພິກຂຸ ປຸຖຸຊົນ[9]ໃນໂລກນີ້ ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີຮູບ ພິຈາລະນາເຫັນຮູບໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນຮູບ

ພິຈາລະນາເຫັນເວທະນາໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີເວທະນາ ພິຈາລະນາເຫັນເວທະນາໃນອັດຕາ ຫຼືພິຈາລະນາເຫັນອັດຕາໃນເວທະນາ

ພິຈາລະນາເຫັນສັນຍາໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີສັນຍາ ພິຈາລະນາເຫັນສັນຍາໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນສັນຍາ

ພິຈາລະນາເຫັນສັງຂານໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີສັງຂານ ພິຈາລະນາເຫັນສັງຂານໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນສັງຂານ

ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີວິນຍານ ພິຈາລະນາເຫັນວິນຍານໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນວິນຍານ

ພິກຂຸ ສັກກາຍະທິດຖິມີໄດ້ຢ່າງນີ້"

## ເຫດທີ່ເຮັດໃຫ້ສັກກາຍະທິດຖິບໍ່ມີ

ພິກຂຸນັ້ນ ໄດ້ທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ສັກກາຍະທິດຖິມີບໍ່ໄດ້ແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພິກຂຸ ອະຣິຍະສາວົກໃນທຳວິໄນນີ້ຜູ້ໄດ້ສະດັບ ໄດ້ເຫັນພຣະອະຣິຍະ ສະຫຼາດໃນທຳຂອງພຣະອະຣິຍະ ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ໄດ້ເຫັນສັດຕະບຸຣຸດ ສະຫຼາດໃນທຳຂອງສັດຕະບຸຣຸດ ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ບໍ່ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີຮູບ ບໍ່ພິຈາລະນາເຫັນຮູບໃນອັດຕາ ບໍພິຈາລະນາເຫັນອັດຕາໃນຮູບ

ບໍ່ພິຈາລະນາເຫັນເວທະນາໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີເວທະນາ ບໍ່ພິຈາລະນາເຫັນເວທະນາໃນອັດຕາ ບໍພິຈາລະນາເຫັນອັດຕາໃນເວທະນາ

ບໍ່ພິຈາລະນາເຫັນສັນຍາໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີສັນຍາ ບໍ່ພິຈາລະນາເຫັນສັນຍາໃນອັດຕາ ບໍພິຈາລະນາເຫັນອັດຕາໃນສັນຍາ

ບໍ່ພິຈາລະນາເຫັນສັງຂານໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີສັງຂານ ບໍ່ພິຈາລະນາເຫັນສັງຂານໃນອັດຕາ ບໍພິຈາລະນາເຫັນອັດຕາໃນສັງຂານ

ບໍ່ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີວິນຍານ ບໍ່ພິຈາລະນາເຫັນວິນຍານໃນອັດຕາ ບໍພິຈາລະນາເຫັນອັດຕາໃນວິນຍານ

ພິກຂຸ ສັກກາຍະທິດຖິມີບໍ່ໄດ້ຢ່າງນີ້"

ຄຸນ ໂທດ ແລະການສະບັດອອກຈາກອຸປາທານຂັນ

[໙໙] ພິກຂຸນັ້ນ ໄດ້ທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດເປັນຄຸນ ອັນໃດເປັນໂທດ ອັນໃດເປັນເຄື່ອງສະບັດອອກຈາກຮູບ ອັນໃດເປັນຄຸນ ອັນໃດເປັນໂທດ ອັນໃດເປັນເຄື່ອງສະບັດອອກຈາກເວທະນາ ອັນໃດເປັນຄຸນ ອັນໃດເປັນໂທດ ອັນໃດເປັນເຄື່ອງສະບັດອອກຈາກສັນຍາ ອັນໃດເປັນຄຸນ ອັນໃດເປັນໂທດ ອັນໃດເປັນເຄື່ອງສະບັດອອກຈາກສັງຂານ ອັນໃດເປັນຄຸນ ອັນໃດເປັນໂທດ ອັນໃດເປັນເຄື່ອງສະບັດອອກຈາກວິນຍານ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພິກຂຸ ສະພາບທີ່ສຸກໂສມະນັດອາໄສຮູບເກີດຂຶ້ນ ນີ້

ເປັນຄຸນໃນຮູບ ສະພາບທີ່ຮູບບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດໃນຮູບ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນຮູບ ນີ້ເປັນເຄື່ອງສະບັດອອກຈາກຮູບ

ສະພາບທີ່ສຸກໂສມະນັດອາໄສເວທະນາເກີດຂຶ້ນ ນີ້ເປັນຄຸນໃນເວທະນາ ສະພາບທີ່ເວທະນາບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດໃນເວທະນາ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນເວທະນາ ນີ້ເປັນເຄື່ອງສະບັດອອກຈາກເວທະນາ

ສະພາບທີ່ສຸກໂສມະນັດອາໄສສັນຍາເກີດຂຶ້ນ ນີ້ເປັນຄຸນໃນສັນຍາ ສະພາບທີ່ສັນຍາບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດໃນສັນຍາ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນສັນຍາ ນີ້ເປັນເຄື່ອງສະບັດອອກຈາກສັນຍາ

ສະພາບທີ່ສຸກໂສມະນັດອາໄສສັງຂານເກີດຂຶ້ນ ນີ້ເປັນຄຸນໃນສັງຂານ ສະພາບທີ່ສັງຂານບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດໃນສັງຂານ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນສັງຂານ ນີ້ເປັນເຄື່ອງສະບັດອອກຈາກສັງຂານ

ສະພາບທີ່ສຸກໂສມະນັດອາໄສວິນຍານເກີດຂຶ້ນ ນີ້ເປັນຄຸນໃນວິນຍານ ສະພາບທີ່ວິນຍານບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດໃນວິນຍານ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນວິນຍານ ນີ້ເປັນເຄື່ອງສະບັດອອກຈາກວິນຍານ"

## ຄວາມບໍ່ມີອະຫັງການ ມະມັງການ ແລະ ມານານຸໄສ

[໗໘] ພິກຂຸນັ້ນໄດ້ທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນຮູ້ຢູ່ແນວໃດ ເຫັນຢູ່ແນວໃດ ຈຶ່ງຈະບໍ່ມີອະຫັງການ ມະມັງການ ແລະ ມານານຸໄສ ໃນກາຍທີ່ມີວິນຍານນີ້ ແລະໃນສັບພະນິມິດພາຍນອກ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພິກຂຸ ຮູບແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ເປັນໄປໃນພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ພິກຂຸນັ້ນ ພິຈາລະນາເຫັນຮູບທັງໝົດນັ້ນດ້ວຍປັນຍາອັນຊອບ ຕາມຄວາມເປັນຈິງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ?"

ເວທະນາແນວໃດແນວໜຶ່ງ ฯລฯ
ສັນຍາແນວໃດແນວໜຶ່ງ ฯລฯ
ສັງຂານແນວໃດແນວໜຶ່ງ ฯລฯ
ວິນຍານແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດແລະປັດຈຸບັນ ເປັນໄປໃນພາຍ

ໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ ພິກຂຸນັ້ນພິຈາລະນາເຫັນວິນຍານທັງໝົດນັ້ນດ້ວຍປັນຍາອັນຖືກຕ້ອງ ຕາມຄວາມເປັນຈິງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ?"

ພິກຂຸ ເມື່ອບຸກຄົນຮູ້ຢູ່ແນວນີ້ ເຫັນຢູ່ແນວນີ້ ຈຶ່ງຈະບໍ່ມີອະຫັງການ ມະມັງການ ແລະມານານຸໄສໃນກາຍທີ່ມີວິນຍານນີ້ ແລະ ໃນສັບພະນິມິດໃນພາຍນອກ"

[໙໐] ລຳດັບນັ້ນ ພິກຂຸຮູບໜຶ່ງໄດ້ເກີດຄວາມຄິດຄຳນຶງແນວນີ້ວ່າ "ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ຮູບເປັນອະນັດຕາ ເວທະນາເປັນອະນັດຕາ ສັນຍາເປັນອະນັດຕາ ສັງຂານເປັນອະນັດຕາ ວິນຍານເປັນອະນັດຕາ ຍ້ອນເຫດນັ້ນ ກຳທີ່ຖືກອະນັດຕາກະທຳ ຈັກຖືກຕ້ອງອັດຕາໄດ້ແນວໃດ?"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຄວາມຄິດຄຳນຶງຂອງພິກຂຸອົງນັ້ນ ດ້ວຍພຣະຫະໄທແລ້ວ ໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ ເປັນໄປໄດ້ທີ່ໂມຄະບຸຣຸດລາງຄົນໃນທຳວິໄນນີ້ ເປັນຜູ້ບໍ່ຮູ້ແຈ້ງ ຕົກຢູ່ໃນອຳນາດອະວິດຊາ ມີໃຈຖືກຕັນຫາຄອບງຳ ຈຶ່ງເຂົ້າໃຈຄຳສັ່ງສອນຂອງສາດສະດາດ້ວຍຄວາມຄິດຄຳນຶງວ່າ "ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ຮູບເປັນອະນັດຕາ ເວທະນາເປັນອະນັດຕາ ສັນຍາເປັນອະນັດຕາ ສັງຂານເປັນອະນັດຕາ ວິນຍານເປັນອະນັດຕາ ຍ້ອນເຫດນັ້ນ ກຳທີ່ຖືກອະນັດຕາກະທຳ ຈັກຖືກຕ້ອງອັດຕາໄດ້ແນວໃດ" ພິກຂຸທັງຫຼາຍ ເຮົາຈະຍ້ອນຖາມ ໃນທຳທີ່ເຮົາໄດ້ແນະນຳທ່ານທັງຫຼາຍໃນທຳເຫຼົ່ານັ້ນ ໆ ໄວ້ແລ້ວ

ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ຮູບທ່ຽງ ຫຼື ບໍ່ທ່ຽງ?"

ພິກຂຸເຫຼົ່ານັ້ນ ທູນຕອບວ່າ "ບໍ່ທ່ຽງ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ "ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ"

"ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ?"

ຄື ເວທະນາ ฯລฯ

ສັນຍາ ฯລฯ

ສັງຂານ ฯລฯ

ວິນຍານ ທ່ຽງ ຫຼື ບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ຫຼື ເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ "ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ພິກຂຸທັງຫຼາຍ ຍ້ອນແນວນັ້ນ ຮູບແນວໃດແນວໜຶ່ງທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ເປັນໄປໃນພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ ພິກຂຸເພິ່ງພິຈາລະນາເຫັນຮູບທັງໝົດນັ້ນ ດ້ວຍປັນຍາອັນຖືກຕ້ອງ ຕາມຄວາມເປັນຈິງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ?"

ເວທະນາແນວໃດແນວໜຶ່ງ ຯລຯ

ສັນຍາແນວໃດແນວໜຶ່ງ ຯລຯ

ສັງຂານແນວໃດແນວໜຶ່ງ ຯລຯ

ວິນຍານແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດແລະປັດຈຸບັນ ເປັນໄປໃນພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ ພິກຂຸເພິ່ງພິຈາລະນາເຫັນວິນຍານທັງໝົດນັ້ນດ້ວຍປັນຍາອັນຖືກຕ້ອງ ຕາມຄວາມເປັນຈິງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ?"

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບ ເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ຍ່ອມເບື່ອໜ່າຍແມ່ນໃນສັນຍາ ຍ່ອມເບື່ອໜ່າຍແມ່ນໃນສັງຂານທັງຫຼາຍ ຍ່ອມເບື່ອໜ່າຍແມ່ນໃນວິນຍານ ເມື່ອເບື່ອໜ່າຍ ຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ຍ່ອມມີຍານວ່າ "ລຸດພົ້ນແລ້ວ" ອະຣິຍະສາວົກຍ່ອມຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນມີໃຈຍິນດີ ຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ແລະເມື່ອພຣະຜູ້ມີພຣະພາກເຈົ້າຕັດເວຍຍາກະຣະໜະພາສິດນີ້ຢູ່ ພິກຂຸປະມານ ໖໐ ຮູບ ໄດ້ມີຈິດລຸດພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນ ດັ່ງນີ້ແລ

**ມະຫາປຸນນະມະສູດທີ ໙ ຈົບ**

# ໑໐. ຈູລະປຸນນະມະສູດ

## ວ່າດ້ວຍພຣະທຳເທດສະໜາໃນຄືນຈັນເຕັມດວງ ສູດນ້ອຍ

[໙໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ຜາສາດຂອງມິຄາຣະມາຕາ ໃນບຸບພາຣາມ ເຂດນະຄອນສາວັດຖີ ສະໄໝນັ້ນ ໃນມື້ອຸໂປສົດຂຶ້ນ ໑໕ ຄ່ຳ ຄືນດວງຈັນເຕັມດວງ ພຣະຜູ້ມີພຣະພາກເຈົ້າຊົງມີພິກຂຸສົງຮ້ອມລ້ອມ ປະທັບນັ່ງໃນທີ່ກາງແຈ້ງ

ຂະນະນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຫຼຽວເບິ່ງພິກຂຸສົງເຊິ່ງນິ່ງງຽບຢູ່ໂດຍລຳດັບ ຈຶ່ງຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດຖາມວ່າ “ພິກຂຸທັງຫຼາຍ ອະສັດຕະບຸຣຸດ ເພິ່ງຮູ້ຈັກອະສັດຕະບຸຣຸດໄດ້ຫຼືບໍ່ ວ່າ “ຜູ້ນີ້ເປັນອະສັດຕະບຸຣຸດ”

ພິກຂຸເຫຼົ່ານັ້ນທູນຕອບວ່າ “ບໍ່ຮູ້ ຂ້ານ້ອຍ”

“ດີແລ້ວ ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ທີ່ອະສັດຕະບຸຣຸດ ເພິ່ງຮູ້ຈັກອະສັດຕະບຸຣຸດວ່າ “ຜູ້ນີ້ເປັນອະສັດຕະບຸຣຸດ” ອັນໜຶ່ງ ອະສັດຕະບຸຣຸດເພິ່ງຮູ້ຈັກສັດຕະບຸຣຸດໄດ້ຫຼືບໍ່ ວ່າ “ຜູ້ນີ້ເປັນສັດຕະບຸຣຸດ”

“ບໍ່ຮູ້ ຂ້ານ້ອຍ”

“ດີແລ້ວ ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ທີ່ອະສັດຕະບຸຣຸດ ເພິ່ງຮູ້ຈັກສັດຕະບຸຣຸດວ່າ “ຜູ້ນີ້ເປັນສັດຕະບຸຣຸດ”

ຍ້ອນວ່າ ອະສັດຕະບຸຣຸດເປັນຜູ້ປະກອບດ້ວຍອະສັດທຳ ມີຄວາມພັກດີຕໍ່ອະສັດຕະບຸຣຸດ ມີຄວາມຄິດຢ່າງອະສັດຕະບຸຣຸດ ມີຄວາມຮູ້ຢ່າງອະສັດຕະບຸຣຸດ ມີຄຳເວົ້າຢ່າງອະສັດຕະບຸຣຸດ ມີການກະທຳຢ່າງອະສັດຕະບຸຣຸດ ມີຄວາມເຫັນຢ່າງອະສັດຕະບຸຣຸດ ໃຫ້ທານຢ່າງອະສັດຕະບຸຣຸດ

ອະສັດຕະບຸຣຸດຜູ້ປະກອບດ້ວຍອະສັດທຳ ເປັນແນວໃດ?

ຄື ອະສັດຕະບຸຣຸດໃນໂລກນີ້ ເປັນຜູ້ບໍ່ມີສັດທາ (ຄວາມເຊື່ອ) ບໍ່ມີຫິຣິ (ຄວາມລະອາຍຕໍ່ບາບ) ບໍ່ມີໂອຕຕັປປະ (ຄວາມເກງກົວບາບ) ມີສຸຕະນ້ອຍ (ການໄດ້ຍິນໄດ້ຟັງໜ້ອຍ) ຂີ້ຄ້ານ ຫຼົງລືມສະຕິ ມີປັນຍາຊາມ

ອະສັດຕະບຸຣຸດຜູ້ປະກອບດ້ວຍອະສັດທຳ ເປັນແນວນີ້ (໑)

ອະສັດຕະບຸຣຸດຜູ້ພັກດີຕໍ່ອະສັດຕະບຸຣຸດ ເປັນແນວໃດ?

ຄື ອະສັດຕະບຸຣຸດໃນໂລກນີ້ ມີສະມະນະພາມຜູ້ບໍ່ມີສັດທາ ບໍ່ມີຫິຣິ ບໍ່ມີໂອຕັປປະ ມີສຸຕະນ້ອຍ ຂີ້ຄ້ານ ຫຼົງລືມສະຕິ ມີປັນຍາຊາມ ເປັນມິດ ເປັນສະຫາຍ

ອະສັດຕະບຸຣຸດຜູ້ພັກດີຕໍ່ອະສັດຕະບຸຣຸດ ເປັນແນວນີ້ (໒)

ອະສັດຕະບຸຣຸດຜູ້ມີຄວາມຄິດຢ່າງອະສັດຕະບຸຣຸດ ເປັນແນວໃດ?

ຄື ອະສັດຕະບຸຣຸດໃນໂລກນີ້ ຍ່ອມຄິດເພື່ອບຽດບຽນຕົນແດ່ ຍ່ອມຄິດເພື່ອບຽດບຽນຜູ້ອື່ນແດ່ ຍ່ອມຄິດເພື່ອບຽດບຽນທັງຕົນແລະຜູ້ອື່ນທັງ ໒ ຝ່າຍແດ່

ອະສັດຕະບຸຣຸດຜູ້ມີຄວາມຄິດຢ່າງອະສັດຕະບຸຣຸດ ເປັນແນວນີ້ (໓)

ອະສັດຕະບຸຣຸດຜູ້ມີຄວາມຮູ້ຢ່າງອະສັດຕະບຸຣຸດ ເປັນແນວໃດ?

ຄື ອະສັດຕະບຸຣຸດໃນໂລກນີ້ ຍ່ອມຮູ້ເພື່ອບຽດບຽນຕົນແດ່ ຍ່ອມຮູ້ເພື່ອບຽດບຽນຜູ້ອື່ນແດ່ ຍ່ອມຮູ້ເພື່ອບຽດບຽນທັງຕົນແລະຜູ້ອື່ນທັງ ໒ ຝ່າຍແດ່

ອະສັດຕະບຸຣຸດຜູ້ມີຄວາມຮູ້ຢ່າງອະສັດຕະບຸຣຸດ ເປັນແນວນີ້ (໔)

ອະສັດຕະບຸຣຸດຜູ້ມີຄຳເວົ້າຢ່າງອະສັດຕະບຸຣຸດ ເປັນແນວໃດ?

ຄື ອະສັດຕະບຸຣຸດໃນໂລກນີ້ ມີປົກກະຕິເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ

ອະສັດຕະບຸຣຸດຜູ້ມີຄຳເວົ້າຢ່າງອະສັດຕະບຸຣຸດ ເປັນແນວນີ້ (໕)

ອະສັດຕະບຸຣຸດຜູ້ມີການກະທຳຢ່າງອະສັດຕະບຸຣຸດ ເປັນແນວໃດ?

ຄື ອະສັດຕະບຸຣຸດໃນໂລກນີ້ ມີປົກກະຕິຂ້າສັດ ລັກຊັບ ປະພຶດຜິດໃນກາມ

ອະສັດຕະບຸຣຸດຜູ້ມີການກະທຳຢ່າງອະສັດຕະບຸຣຸດ ເປັນແນວນີ້ (໖)

ອະສັດຕະບຸຣຸດຜູ້ມີທິດຖິຢ່າງອະສັດຕະບຸຣຸດ ເປັນແນວໃດ?

ຄື ອະສັດຕະບຸຣຸດໃນໂລກນີ້ ເປັນຜູ້ມີທິດຖິແນວນີ້ວ່າ "ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການເຊັ່ນສວງທີ່ເຊັ່ນສວງແລ້ວກໍບໍ່ມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີເຮັດຊົ່ວກໍບໍ່ມີ ໂລກນີ້ບໍ່ມີ ໂລກໜ້າບໍ່ມີ ມານດາບໍ່ມີຄຸນ ບິດາບໍ່ມີຄຸນ ສັດທີ່ເປັນໂອປະປາຕິກະກໍບໍ່ມີ ສະມະນະພາມຜູ້ປະພຶດປະຕິບັດຊອບ ເຮັດໃຫ້ແຈ້ງໂລກນີ້ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງ ແລ້ວສອນໃຫ້ຜູ້ອື່ນໃຫ້ຮູ້ແຈ້ງ ກໍບໍ່ມີໃນໂລກ

ອະສັດຕະບຸຣຸດຜູ້ມີທິດຖິຢ່າງອະສັດຕະບຸຣຸດ ເປັນແນວນີ້ (໗)

ອະສັດຕະບຸຣຸດໃຫ້ທານຢ່າງອະສັດຕະບຸຣຸດ ເປັນແນວໃດ?

ຄື ອະສັດຕະບຸຣຸດໃນໂລກນີ້ໃຫ້ທານໂດຍບໍ່ເຄົາລົບ ບໍ່ໃຫ້ທານດ້ວຍມືຂອງຕົນ ບໍ່ໃຫ້ທານດ້ວຍຄວາມອ່ອນນ້ອມ ໃຫ້ທານແນວເສຍບໍ່ໄດ້ ເປັນຜູ້ບໍ່ເຫັນຜົນໃຫ້ທານ

ອະສັດຕະບຸຣຸດໃຫ້ທານຢ່າງອະສັດຕະບຸຣຸດ ເປັນແນວນີ້ (໗)

ພິກຂຸທັງຫຼາຍ ອະສັດຕະບຸຣຸດນັ້ນ ເປັນຜູ້ປະກອບດ້ວຍອະສັດທຳແນວນີ້ ມີຄວາມພັກດີຕໍ່ອະສັດຕະບຸຣຸດແນວນີ້ ມີຄວາມຄິດຢ່າງອະສັດຕະບຸຣຸດແນວນີ້ ມີຄວາມຮູ້ແນວອະສັດຕະບຸຣຸດແນວນີ້ ມີຄຳເວົ້າຢ່າງອະສັດຕະບຸຣຸດແນວນີ້ ມີການກະທຳຢ່າງອະສັດຕະບຸຣຸດແນວນີ້ ມີຄວາມເຫັນຢ່າງອະສັດຕະບຸຣຸດແນວນີ້ ໃຫ້ທານຢ່າງອະສັດຕະບຸຣຸດແນວນີ້ແລ້ວ ຫຼັງຈາກຕາຍແລ້ວຈະໄປເກີດໃນຄະຕິຂອງອະສັດຕະບຸຣຸດ

ຄະຕິຂອງອະສັດຕະບຸຣຸດ ຄື ອັນໃດ?

ຄື ນະຣົກ ຫຼື ກຳເນີດສັດເດຍຣັດສານ

[໒໘] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸທັງຫຼາຍ ສັດຕະບຸຣຸດເພິ່ງຮູ້ຈັກສັດຕະບຸຣຸດຫຼືວ່າ "ຜູ້ນີ້ເປັນສັດຕະບຸຣຸດ"

ພິກຂຸເຫຼົ່ານັ້ນ ທູນຕອບວ່າ "ຮູ້ ຂ້ານ້ອຍ"

"ດີແລ້ວ ພິກຂຸທັງຫຼາຍ ເປັນໄປໄດ້ທີ່ສັດຕະບຸຣຸດເພິ່ງຮູ້ຈັກສັດຕະບຸຣຸດວ່າ "ຜູ້ນີ້ເປັນສັດຕະບຸຣຸດ" ສ່ວນສັດຕະບຸຣຸດເພິ່ງຮູ້ຈັກອະສັດຕະບຸຣຸດຫຼືວ່າ "ຜູ້ນີ້ເປັນອະສັດຕະບຸຣຸດ"

"ຮູ້ ຂ້ານ້ອຍ"

"ດີແລ້ວ ພິກຂຸທັງຫຼາຍ ເປັນໄປໄດ້ທີ່ສັດຕະບຸຣຸດເພິ່ງຮູ້ຈັກອະສັດຕະບຸຣຸດວ່າ "ຜູ້ນີ້ເປັນອະສັດຕະບຸຣຸດ"

ຍ້ອນວ່າ ສັດຕະບຸຣຸດເປັນຜູ້ປະກອບດ້ວຍສັດທຳ ມີຄວາມພັກດີຕໍ່ສັດຕະບຸຣຸດ ມີຄວາມຄິດແນວສັດຕະບຸຣຸດ ມີຄວາມຮູ້ແນວສັດຕະບຸຣຸດ ມີຄຳເວົ້າແນວສັດຕະບຸຣຸດ ມີການກະທຳແນວສັດຕະບຸຣຸດ ມີທິດຖິແນວສັດຕະບຸຣຸດ ໃຫ້ທານແນວສັດຕະບຸຣຸດ

ສັດຕະບຸຣຸດຜູ້ປະກອບດ້ວຍສັດທຳ ເປັນແນວໃດ?

ຄື ສັດຕະບຸຣຸດໃນໂລກນີ້ ເປັນຜູ້ມີສັດທາ ມີຫິຣິ ມີໂອຕັປປະ ມີສຸຕະຫຼາຍ ຜາຣົບຄວາມພຽນ ມີສະຕິຕັ້ງໝັ້ນ ມີປັນຍາ

ສັດຕະບຸຣຸດຜູ້ປະກອບດ້ວຍສັດທຳ ເປັນແນວນີ້ (໑)

ສັດຕະບຸຣຸດຜູ້ພັກດີຕໍ່ສັດຕະບຸຣຸດ ເປັນແນວໃດ?

ຄື ສັດຕະບຸຣຸດໃນໂລກນີ້ ມີສະມະນະພາມຜູ້ມີສັດທາ ມີຫິຣິ ມີໂອຕັປປະ ມີສຸຕະຫຼາຍ

ພາຮົບຄວາມພຽນ ມີສະຕິຕັ້ງໝັ້ນ ມີປັນຍາ ເປັນມິດ ເປັນສະຫາຍ

ສັດຕະບຸຣຸດຜູ້ພັກດີຕໍ່ສັດຕະບຸຣຸດ ເປັນແນວນີ້ (໔)

ສັດຕະບຸຣຸດຜູ້ມີຄວາມຄິດແນວສັດຕະບຸຣຸດ ເປັນແນວໃດ?

ຄື ສັດຕະບຸຣຸດໃນໂລກນີ້ ຍ່ອມບໍ່ຄິດເພື່ອບຽດບຽນຕົນແດ່ ຍ່ອມບໍ່ຄິດເພື່ອບຽດບຽນຜູ້ອື່ນແດ່ ຍ່ອມບໍ່ຄິດເພື່ອບຽດບຽນທັງຕົນແລະຜູ້ອື່ນທັງ ໔ ຝ່າຍແດ່

ສັດຕະບຸຣຸດຜູ້ມີຄວາມຄິດແນວສັດຕະບຸຣຸດ ເປັນແນວນີ້ (໓)

ສັດຕະບຸຣຸດຜູ້ມີຄວາມຮູ້ແນວສັດຕະບຸຣຸດ ເປັນແນວໃດ?

ຄື ສັດຕະບຸຣຸດໃນໂລກນີ້ ຍ່ອມຮູ້ເພື່ອບໍ່ບຽດບຽນຕົນແດ່ ຍ່ອມຮູ້ເພື່ອບໍ່ບຽດບຽນຜູ້ອື່ນແດ່ ຍ່ອມຮູ້ເພື່ອບໍ່ບຽດບຽນທັງຕົນແລະຜູ້ອື່ນທັງ ໔ ຝ່າຍແດ່

ສັດຕະບຸຣຸດຜູ້ມີຄວາມຮູ້ແນວສັດຕະບຸຣຸດ ເປັນແນວນີ້ (໔)

ສັດຕະບຸຣຸດຜູ້ມີຄຳເວົ້າແນວສັດຕະບຸຣຸດ ເປັນແນວໃດ?

ຄື ສັດຕະບຸຣຸດໃນໂລກນີ້ ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ

ສັດຕະບຸຣຸດຜູ້ມີຄຳເວົ້າແນວສັດຕະບຸຣຸດ ເປັນແນວນີ້ (໕)

ສັດຕະບຸຣຸດຜູ້ມີການກະທຳແນວສັດຕະບຸຣຸດ ເປັນແນວໃດ?

ຄື ສັດຕະບຸຣຸດໃນໂລກນີ້ ເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ

ສັດຕະບຸຣຸດຜູ້ມີການກະທຳແນວສັດຕະບຸຣຸດ ເປັນແນວນີ້ (໖)

ສັດຕະບຸຣຸດຜູ້ມີທິດຖິແນວສັດຕະບຸຣຸດ ເປັນແນວໃດ?

ຄື ສັດຕະບຸຣຸດໃນໂລກນີ້ ເປັນຜູ້ມີທິດຖິແນວນີ້ວ່າ "ທານທີ່ໃຫ້ແລ້ວມີຜົນ ຍັນທີ່ບູຊາແລ້ວມີຜົນ ການເຊັ່ນສວງທີ່ເຊັ່ນສວງແລ້ວມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີເຮັດຊົ່ວມີ ໂລກນີ້ມີ ໂລກໜ້າມີ ມານດາມີຄຸນ ບິດາມີຄຸນ ສັດທີ່ເປັນໂອປະປາຕິກະມີຢູ່ ສະມະນະພາມຜູ້ປະພຶດປະຕິບັດມັກເຮັດໃຫ້ແຈ້ງໂລກນີ້ໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງ ກໍມີຢູ່ໃນໂລກ

ສັດຕະບຸຣຸດຜູ້ມີທິດຖິແນວສັດຕະບຸຣຸດ ເປັນແນວນີ້ (໗)

ສັດຕະບຸຣຸດໃຫ້ທານແນວສັດຕະບຸຣຸດ ເປັນແນວໃດ?

ຄື ສັດຕະບຸຣຸດໃນໂລກນີ້ໃຫ້ທານໂດຍເຄົາລົບ ໃຫ້ທານດ້ວຍມືຂອງຕົນ ໃຫ້ທານດ້ວຍຄວາມອ່ອນນ້ອມ ໃຫ້ທານຢ່າງບໍຣິສຸດ ເປັນຜູ້ມີທິດຖິວ່າ "ທານທີ່ໃຫ້ແລ້ວມີຜົນ" ດັ່ງນີ້ແລ້ວຈຶ່ງໃຫ້ທານ

ສັດຕະບຸຣຸດໃຫ້ທານແນວສັດຕະບຸຣຸດ ເປັນແນວນີ້ (໗)

ສັດຕະບຸຣຸດນັ້ນເປັນຜູ້ປະກອບດ້ວຍສັດທຳແນວນີ້ ມີຄວາມພັກດີຕໍ່ສັດຕະບຸຣຸດແນວນີ້ ມີຄວາມຄິດແນວສັດຕະບຸຣຸດແນວນີ້ ມີຄວາມຮູ້ແນວສັດຕະບຸຣຸດແນວນີ້ ມີຄຳເວົ້າແນວສັດຕະບຸຣຸດແນວນີ້ ມີການກະທຳແນວສັດຕະບຸຣຸດແນວນີ້ ມີທິດຖິແນວສັດຕະບຸຣຸດແນວນີ້ ໃຫ້ທານແນວສັດຕະບຸຣຸດແນວນີ້ແລ້ວ ຫຼັງຈາກຕາຍແລ້ວ ຍ່ອມບັງເກີດໃນຄະຕິຂອງສັດຕະບຸຣຸດ

ຄະຕິຂອງສັດຕະບຸຣຸດ ຄື ອັນໃດ?

ຄື ຄວາມເປັນໃຫຍ່ໃນເທວະດາ ຫຼື ຄວາມເປັນໃຫຍ່ໃນມະນຸດ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ຈູລະປຸນນະມະສູດທີ ໑໐ ຈົບ**

**ເທວະທະຫວັກທີ ໑ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ ຄື

# ໘. ອະນຸປະທະວັກ

## ໝວດວ່າດ້ວຍທຳຕາມລຳດັບບົດ

# ໑. ອະນຸປະທະສູດ

## ວ່າດ້ວຍທຳຕາມລຳດັບບົດ

[໙໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີຢູ່ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ສາຣີບຸດເປັນບັນດິດ[໑] ມີປັນຍາຫຼາຍ[໒] ມີປັນຍາກວ້າງຂວາງ[໓] ມີປັນຍາແຈ່ມໃສ[໔] ມີປັນຍາວ່ອງໄວ[໕] ມີປັນຍາແຫຼມຄົມ[໖] ມີປັນຍາເພີກຖອນກິເລດ[໗] ພິກຂຸທັງຫຼາຍ ພຽງເຄິ່ງເດືອນ ສາຣີບຸດກໍເຫັນແຈ້ງທຳຕາມລຳດັບບົດໄດ້ ໃນການເຫັນແຈ້ງທຳຕາມລຳດັບບົດ[໑]ຂອງສາຣີບຸດນັ້ນ ມີເລື້ອງດັ່ງຕໍ່ໄປນີ້

### ຣູບຊານ ໔ ອະຣູບປະຊານ ໔

[໙໔] ພິກຂຸທັງຫຼາຍ ໃນເລື້ອງນີ້ ສາຣີບຸດສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່

ກໍທຳໃນປະຖົມຊານນັ້ນ ຄື ວິຕົກ (ຄວາມນຶກ) ວິຈານ (ຄວາມຕອງ) ປີຕິ (ຄວາມອີ່ມໃຈ) ສຸກ  (ຄວາມສຸກ) ຈິດເຕກັກຄະຕາ (ຄວາມທີ່ຈິດມີອາລົມດຽວ) ຜັດສະ (ຄວາມຖືກຕ້ອງ) ເວທະນາ (ຄວາມສະເຫວີຍອາລົມ) ສັນຍາ (ຄວາມໝາຍຮູ້) ເຈຕະນາ (ຄວາມຈົ່ງໃຈ) ວິນຍານ (ຄວາມຮູ້ແຈ້ງ) ສັນທະ (ຄວາມພໍໃຈ) ອະທິໂມກ (ຄວາມນ້ອມໃຈເຊື່ອ) ວິຣິຍະ (ຄວາມພຽນ) ສະຕິ (ຄວາມຣະນຶກໄດ້) ອຸເປກຂາ (ຄວາມວາງເສີຍ) ມະນະສິການ (ຄວາມຈຳແນກ) ເຫຼົ່ານັ້ນ ສາຣີບຸດ ກໍານົດຕາມລຳດັບບົດໄດ້ແລ້ວ ທຳທີ່ສາຣີບຸດຮູ້ແຈ້ງແລ້ວເຫຼົ່ານັ້ນ ຍ່ອມເກີດຂຶ້ນ ຕັ້ງຢູ່ດັບໄປ ສາຣີບຸດນັ້ນ ຮູ້ແຈ້ງແນວນີ້ວ່າ "ທຳເຫຼົ່ານີ້ທີ່ຍັງບໍ່ມີກໍມີຂຶ້ນ ທີ່ມີແລ້ວຍ່ອມດັບໄປ" ທ່ານຈຶ່ງບໍ່ຍິນດີ ບໍ່ຍິນຮ້າຍ ອັນກິເລດອາໄສບໍ່ໄດ້ ອັນກິເລດພົວພັນບໍ່ໄດ້ ລຸດພົ້ນແລ້ວ ພາກໄດ້ແລ້ວ

ໃນທຳເຫຼົ່ານັ້ນ ມີຈິດທີ່ເຝິກໃຫ້ປາສະຈາກເຂດແດນຄືກິເລດໄດ້ແລ້ວຢູ່ ສາຣີບຸດນັ້ນຮູ້ແຈ້ງວ່າ "ການກຳຈັດທຸກທີ່ສູງ ໆ ຂຶ້ນໄປ ຍັງມີຢູ່" ທ່ານມີຄວາມເຫັນວ່າ ການກຳຈັດທຸກມີໄດ້ຍ້ອນການກະທຳທຳນັ້ນໃຫ້ຫຼາຍຂຶ້ນ (໑)

ອີກປະການໜຶ່ງ ຍ້ອນວິຕົກວິຈານສະງົບລະງັບໄປ ສາຣີບຸດບັນລຸທຸຕິຍະຊານ ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິ ແລະ ສຸກອັນເກີດຈາກສະມາທິຢູ່ ກຳທຳໃນທຸຕິຍະຊານ ຄື ຄວາມຜ່ອງໃສໃນພາຍໃນ ປີຕິ ສຸກ ຈິດເຕກັກຄະຕາ ຜັດສະ ເວທະນາ ສັນຍາ ເຈຕະນາ ວິນຍານ ສັນທະ ອະທິໂມກ ວິຣິຍະ ສະຕິ ອຸເປກຂາ ມະນະສິການເຫຼົ່ານັ້ນ ສາຣີບຸດກຳນົດຕາມລຳດັບບົດໄດ້ແລ້ວ ທຳທີ່ສາຣີບຸດຮູ້ແຈ້ງແລ້ວເຫຼົ່ານັ້ນຍ່ອມເກີດຂຶ້ນ ຕັ້ງຢູ່ ດັບໄປ ສາຣີບຸດນັ້ນຮູ້ແຈ້ງແນວນີ້ວ່າ " ທຳເຫຼົ່ານີ້ທີ່ຍັງບໍ່ມີກໍມີຂຶ້ນ ທີ່ມີແລ້ວຍ່ອມດັບໄປ" ທ່ານຈຶ່ງບໍ່ຍິນດີ ບໍ່ຍິນຮ້າຍ ອັນກິເລດອາໄສບໍ່ໄດ້ ອັນກິເລດພົວພັນບໍ່ໄດ້ ລຸດພົ້ນແລ້ວ ພາກໄດ້ແລ້ວໃນທຳເຫຼົ່ານັ້ນ ມີຈິດທີ່ເຝິກໃຫ້ປາສະຈາກເຂດແດນຄືກິເລດໄດ້ແລ້ວຢູ່ ສາຣີບຸດນັ້ນຮູ້ແຈ້ງວ່າ "ການກຳຈັດທຸກທີ່ສູງ ໆ ຂຶ້ນໄປສູ່ມີຢູ່" ທ່ານມີຄວາມເຫັນວ່າ ການກຳຈັດທຸກມີໄດ້ຍ້ອນການກະທຳທຳນັ້ນໃຫ້ຫຼາຍຂຶ້ນ (໒)

ອີກປະການໜຶ່ງ ຍ້ອນປີຕິຈາງຄາຍອອກ ສາຣີບຸດມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາມີສະຕິ ຢູ່ເປັນສຸກ" ກຳທຳໃນຕະຕິຍະຊານ ຄື ສຸກ ສະຕິ ສຳປະຊັນຍະ (ຄວາມຮູ້ໂຕ) ຈິດເຕກັກຄະຕາ ຜັດສະ ເວທະນາ ສັນຍາ ເຈຕະນາ ວິນຍານ ສັນທະ ອະທິໂມກ ວິຣິຍະ ສະຕິ ອຸເປກຂາ ມະນະສິການເຫຼົ່ານັ້ນ ສາຣີບຸດກຳນົດຕາມລຳດັບບົດໄດ້ແລ້ວ ທຳທີ່ສາຣີບຸດຮູ້ແຈ້ງແລ້ວເຫຼົ່ານັ້ນ ຍ່ອມເກີດຂຶ້ນ ຕັ້ງຢູ່ ດັບໄປ ສາຣີບຸດນັ້ນຮູ້ແຈ້ງແນວນີ້ວ່າ "ທຳເຫຼົ່ານີ້ທີ່ຍັງບໍ່ມີກໍມີຂຶ້ນ ທີ່ມີແລ້ວຍ່ອມດັບໄປ" ທ່ານຈຶ່ງບໍ່ຍິນດີ ບໍ່ຍິນຮ້າຍ ອັນກິເລດອາໄສບໍ່ໄດ້ ອັນກິເລດພົວພັນບໍ່ໄດ້ ລຸດພົ້ນແລ້ວ ພາກໄດ້ແລ້ວໃນທຳເຫຼົ່ານັ້ນ ມີຈິດທີ່ເຝິກໃຫ້ປາສະຈາກເຂດແດນຄືກິເລດໄດ້ແລ້ວຢູ່ ສາຣີບຸດນັ້ນຮູ້ແຈ້ງວ່າ "ການກຳຈັດທຸກທີ່ສູງ ໆ ຂຶ້ນໄປສູ່ມີຢູ່" ທ່ານມີຄວາມເຫັນວ່າ ການກຳຈັດທຸກມີໄດ້ຍ້ອນການກະທຳທຳນັ້ນໃຫ້ຫຼາຍຂຶ້ນ (໓)

ອີກປະການໜຶ່ງ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນ ສາຣີບຸດບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ກຳທຳໃນຈະຕຸດຖະຊານ ຄື ອຸເປກຂາ ອະທຸກຂະມະສຸກຂະເວທະນາ ຍ້ອນໃຈບໍລິສຸດແລ້ວຈຶ່ງບໍ່ມີຄວາມຄິດຄຳນຶງ ສະຕິບໍລິສຸດ ຈິດເຕກັກຄະຕາ ຜັດສະ ເວທະນາ ສັນຍາ ເຈຕະນາ ວິນຍານ ສັນທະ ອະທິໂມກ ວິຣິຍະ ສະຕິ ອຸເປກຂາ ມະນະສິການເຫຼົ່ານັ້ນ ສາຣີບຸດກຳນົດຕາມລຳດັບບົດໄດ້ແລ້ວ ທຳທີ່ສາຣີບຸດຮູ້ແຈ້ງແລ້ວເຫຼົ່ານັ້ນ ຍ່ອມເກີດຂຶ້ນ ຕັ້ງຢູ່ ດັບໄປ ສາຣີບຸດນັ້ນຮູ້ແຈ້ງແນວນີ້ວ່າ "ທຳເຫຼົ່ານີ້ທີ່

ຍັງບໍ່ມີກໍມີຂຶ້ນ ທີ່ມີແລ້ວຍ່ອມດັບໄປ" ທ່ານຈຶ່ງບໍ່ຍິນດີ ບໍ່ຍິນຮ້າຍ ອັນກິເລດອາໄສບໍ່ໄດ້ ອັນກິເລດພົວພັນບໍ່ໄດ້ ລຸດພົ້ນແລ້ວ ພາກໄດ້ແລ້ວໃນທຳເຫຼົ່ານັ້ນ ມີຈິດທີ່ເຝິກໃຫ້ປາສະຈາກເຂດແດນຄືກິເລດໄດ້ແລ້ວຢູ່ ສາຣີບຸດນັ້ນຮູ້ແຈ້ງວ່າ "ການກຳຈັດທຸກທີ່ສູງ ໆ ຂຶ້ນໄປສູ່ມີຢູ່" ທ່ານມີຄວາມເຫັນວ່າ ການກຳຈັດທຸກມີໄດ້ຍ້ອນການກະທຳທຳນັ້ນໃຫ້ຫຼາຍຂຶ້ນ (໔)

ອີກປະການໜຶ່ງ ຍ້ອນລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ ສາຣີບຸດບັນລຸອາກາສານັນຈາຍະຕະນະ ໂດຍກຳນົດວ່າ "ອາກາດຫາບ່ອນສຸດບໍ່ໄດ້" ຢູ່ ກໍທຳໃນອາກາສານັນຈາຍະຕະນະ ຄື ອາກາສານັນຈາຍະຕະນະ-ສັນຍາ ຈິດເຕກັກຄະຕາ ຜັດສະ ເວທະນາ ສັນຍາ ເຈຕະນາ ວິນຍານ ສັນທະ ອະທິໂມກ ວິຣິຍະ ສະຕິອຸເປກຂາ ມະນະສິການເຫຼົ່ານັ້ນ ສາຣີບຸດກຳນົດຕາມລຳດັບບົດໄດ້ແລ້ວ ທຳທີ່ສາຣີບຸດຮູ້ແຈ້ງແລ້ວເຫຼົ່ານັ້ນ ຍ່ອມເກີດຂຶ້ນ ຕັ້ງຢູ່ ດັບໄປ ສາຣີບຸດນັ້ນຮູ້ແຈ້ງແນວນີ້ວ່າ "ທຳເຫຼົ່ານີ້ທີ່ຍັງບໍ່ມີກໍມີຂຶ້ນ ທີ່ມີແລ້ວຍ່ອມດັບໄປ" ທ່ານຈຶ່ງບໍ່ຍິນດີ ບໍ່ຍິນຮ້າຍ ອັນກິເລດອາໄສບໍ່ໄດ້ ອັນກິເລດພົວພັນບໍ່ໄດ້ ລຸດພົ້ນແລ້ວ ພາກໄດ້ແລ້ວໃນທຳເຫຼົ່ານັ້ນ ມີຈິດທີ່ເຝິກໃຫ້ປາສະຈາກເຂດແດນຄືກິເລດໄດ້ແລ້ວຢູ່ ສາຣີບຸດ ນັ້ນຮູ້ແຈ້ງວ່າ "ການກຳຈັດທຸກທີ່ສູງ ໆ ຂຶ້ນໄປສູ່ມີຢູ່" ທ່ານມີຄວາມເຫັນວ່າການກຳຈັດທຸກມີໄດ້ຍ້ອນການກະທຳທຳນັ້ນໃຫ້ຫຼາຍຂຶ້ນ (໕)

ອີກປະການໜຶ່ງ ຍ້ອນລ່ວງອາກາສານັນຈາຍະຕະນະໄດ້ໂດຍປະການທັງປວງ ສາຣີບຸດບັນລຸວິນຍານັນຈາຍະຕະນະ ໂດຍກຳນົດວ່າ "ວິນຍານຫາບ່ອນສຸດບໍ່ໄດ້" ຢູ່ ກໍທຳໃນວິນຍານັນຈາຍະຕະນະ ຄື ວິນຍານັນຈາຍະຕະນະສັນຍາ ຈິດເຕກັກຄະຕາ ຜັດ ສະ ເວທະນາ ສັນຍາເຈຕະນາ ວິນຍານ ສັນທະ ອະທິໂມກ ວິຣິຍະ ສະຕິ ອຸເປກຂາ ມະນະສິການເຫຼົ່ານັ້ນ ສາຣີບຸດກຳນົດຕາມລຳດັບບົດໄດ້ແລ້ວ ທຳທີ່ສາຣີບຸດຮູ້ແຈ້ງແລ້ວເຫຼົ່ານັ້ນ ຍ່ອມເກີດຂຶ້ນ ຕັ້ງຢູ່ ດັບໄປສາຣີບຸດນັ້ນຮູ້ແຈ້ງແນວນີ້ວ່າ "ທຳເຫຼົ່ານີ້ທີ່ຍັງບໍ່ມີກໍມີຂຶ້ນ ທີ່ມີແລ້ວຍ່ອມດັບໄປ" ທ່ານຈຶ່ງບໍ່ຍິນດີບໍ່ຍິນຮ້າຍ ອັນກິເລດອາໄສບໍ່ໄດ້ ອັນກິເລດພົວພັນບໍ່ໄດ້ ລຸດພົ້ນແລ້ວ ພາກໄດ້ແລ້ວໃນທຳເຫຼົ່ານັ້ນ ມີຈິດທີ່ເຝິກໃຫ້ປາສະຈາກເຂດແດນຄືກິເລດໄດ້ແລ້ວຢູ່ ສາຣີບຸດນັ້ນຮູ້ແຈ້ງວ່າ "ການກຳຈັດທຸກທີ່ສູງ ໆ ຂຶ້ນໄປສູ່ມີຢູ່" ທ່ານມີຄວາມເຫັນວ່າ ການກຳຈັດທຸກມີໄດ້ຍ້ອນການກະທຳທຳນັ້ນໃຫ້ຫຼາຍຂຶ້ນ (໖)

ອີກປະການໜຶ່ງ ຍ້ອນລ່ວງວິນຍານັນຈາຍະຕະນະໄດ້ໂດຍປະການທັງປວງ ສາຣີບຸດບັນລຸອາກິນຈັນຍາຍະຕະນະ ໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່ ກໍທຳໃນອາກິນຈັນຍາຍະຕະນະຄື ອາກິນຈັນຍາຍະຕະນະສັນຍາ ຈິດເຕກັກຄະຕາ ຜັດສະ ເວທະນາ ສັນຍາ ເຈຕະນາ ວິນຍານ ສັນທະ ອະທິໂມກ ວິຣິຍະ ສະຕິ ອຸເປກຂາ ມະນະສິການເຫຼົ່ານັ້ນ ສາຣີບຸດກຳນົດຕາມລຳດັບບົດໄດ້ແລ້ວ ທຳທີ່ສາຣີບຸດຮູ້ແຈ້ງແລ້ວເຫຼົ່ານັ້ນ ຍ່ອມເກີດຂຶ້ນ ຕັ້ງຢູ່ ດັບໄປ ສາຣີບຸດນັ້ນຮູ້

ແຈ້ງແນວນີ້ວ່າ "ໄດ້ຂ່າວວ່າ ທຳເຫຼົ່ານີ້ທີ່ຍັງບໍ່ມີກໍມີຂຶ້ນ ທີ່ມີແລ້ວຍ່ອມດັບໄປ" ທ່ານຈຶ່ງບໍ່ຍິນດີ ບໍ່ຍິນຮ້າຍ ອັນກິເລດອາໄສບໍ່ໄດ້ ອັນກິເລດພົວພັນບໍ່ໄດ້ ລຸດພົ້ນແລ້ວ ພາກໄດ້ແລ້ວໃນທຳເຫຼົ່ານັ້ນ ມີຈິດທີ່ເຝິກໃຫ້ປາສະຈາກເຂດແດນຄືກິເລດໄດ້ແລ້ວຢູ່ ສາຣີບຸດນັ້ນຮູ້ແຈ້ງວ່າ "ການກຳຈັດທຸກທີ່ສູງ ໆ ຂຶ້ນໄປສູ່ມີຢູ່" ທ່ານມີຄວາມເຫັນວ່າ ການກຳຈັດທຸກມີໄດ້ຍ້ອນການກະທຳທຳນັ້ນໃຫ້ຫຼາຍຂຶ້ນ (໗)

[໗໘] ອີກປະການໜຶ່ງ ຍ້ອນລ່ວງອາກິນຈັນຍາຍະຕະນະໄດ້ໂດຍປະການທັງປວງ ສາຣີບຸດບັນລຸເນວະສັນຍານາສັນຍາຍະຕະນະຢູ່ ທ່ານມີສະຕິອອກຈາກສະມາບັດນັ້ນແລ້ວ ພິຈາລະນາເຫັນທຳທີ່ລ່ວງລັບດັບຜັນແປໄປແລ້ວວ່າ "ທຳເຫຼົ່ານີ້ທີ່ຍັງບໍ່ມີກໍມີຂຶ້ນ ທີ່ມີແລ້ວຍ່ອມດັບໄປ" ທ່ານຈຶ່ງບໍ່ຍິນດີ ບໍ່ຍິນຮ້າຍ ອັນກິເລດອາໄສບໍ່ໄດ້ ອັນກິເລດພົວພັນບໍ່ໄດ້ ລຸດພົ້ນແລ້ວ ພາກໄດ້ແລ້ວໃນທຳເຫຼົ່ານັ້ນ ມີຈິດທີ່ເຝິກໃຫ້ປາສະຈາກເຂດແດນຄືກິເລດໄດ້ແລ້ວຢູ່ ສາຣີບຸດນັ້ນຮູ້ແຈ້ງວ່າ "ການກຳຈັດທຸກທີ່ສູງ ໆ ຂຶ້ນໄປສູ່ມີຢູ່" ທ່ານມີຄວາມເຫັນວ່າ ການກຳຈັດທຸກມີໄດ້ຍ້ອນການກະທຳທຳນັ້ນໃຫ້ຫຼາຍຂຶ້ນ (໘)

[໗໙] ອີກປະການໜຶ່ງ ຍ້ອນລ່ວງເນວະສັນຍານາສັນຍາຍະຕະນະໄດ້ໂດຍປະການທັງປວງ ສາຣີບຸດບັນລຸສັນຍາເວທະຍິຕະນິໂຣດຢູ່ ຍ້ອນເຫັນດ້ວຍປັນຍາອາສະວະທັງຫຼາຍຂອງທ່ານຈຶ່ງໝົດໄປ ສາຣີບຸດນັ້ນ ມີສະຕິອອກຈາກສະມາບັດແລ້ວ ພິຈາລະນາເຫັນທຳທີ່ລ່ວງລັບດັບຜັນແປໄປແລ້ວວ່າ "ໄດ້ຂ່າວວ່າ ທຳເຫຼົ່ານີ້ທີ່ຍັງບໍ່ມີກໍມີຂຶ້ນ ທີ່ມີແລ້ວຍ່ອມດັບໄປ" ທ່ານຈຶ່ງບໍ່ຍິນດີ ບໍ່ຍິນຮ້າຍ ອັນກິເລດອາໄສບໍ່ໄດ້ ອັນກິເລດພົວພັນບໍ່ໄດ້ ລຸດພົ້ນແລ້ວ ພາກໄດ້ແລ້ວໃນທຳເຫຼົ່ານັ້ນ ມີຈິດທີ່ເຝິກໃຫ້ປາສະຈາກເຂດແດນຄືກິເລດໄດ້ແລ້ວຢູ່ ສາຣີບຸດນັ້ນຮູ້ແຈ້ງວ່າ "ການກຳຈັດທຸກທີ່ສູງ ໆ ຂຶ້ນໄປສູ່ມີຢູ່" ທ່ານມີຄວາມເຫັນວ່າ ການກຳຈັດທຸກມີໄດ້ຍ້ອນການກະທຳທຳນັ້ນໃຫ້ຫຼາຍຂຶ້ນ (໙)

[໗໗] ພິກຂຸທັງຫຼາຍ ບຸກຄົນຜູ້ກ່າວຊອບ ເພິ່ງກ່າວຊົມພິກຂຸອົງໃດວ່າ "ເປັນຜູ້ເຖິງວະສີ (ຄວາມຊ່ຽວຊານ) ເຖິງບາຣະມີ (ຄວາມສຳເລັດ) ໃນອະຣິຍະສີນ ເປັນຜູ້ເຖິງວະສີ ເຖິງບາຣະມີໃນອະຣິຍະສະມາທິ ເປັນຜູ້ເຖິງວະສີ ເຖິງບາຣະມີໃນອະຣິຍະປັນຍາ ເປັນຜູ້ເຖິງວະສີ ເຖິງບາຣະມີໃນອະຣິຍະວິມຸດຕິ" ພິກຂຸອົງນັ້ນຄືສາຣີບຸດນັ້ນເອງ ທີ່ຜູ້ກ່າວຊອບເພິ່ງກ່າວຊົມວ່າ "ເປັນຜູ້ເຖິງວະສີ ເຖິງບາຣະມີໃນອະຣິຍະສີນ ເປັນຜູ້ເຖິງວະສີ ເຖິງບາຣະມີໃນອະຣິຍະສະມາທິ ເປັນຜູ້ເຖິງວະສີ ເຖິງບາຣະມີໃນອະຣິຍະປັນຍາ ເປັນຜູ້ເຖິງວະສີ ເຖິງບາຣະມີໃນອະຣິຍະວິມຸດຕິ"

ບຸກຄົນຜູ້ກ່າວຊອບ ເພິ່ງກ່າວຊົມພິກຂຸອົງໃດວ່າ "ເປັນບຸດເປັນໂອຣົດຂອງພຣະຜູ້ມີພຣະພາກເຈົ້າ ເກີດແຕ່ປາກຂອງພຣະຜູ້ມີພຣະພາກເຈົ້າ ເກີດແຕ່ທຳ ອັນທຳເນຣະມິດແລ້ວ ເປັນທຳທາຍາດ ບໍ່ແມ່ນເປັນອາມິດທາຍາດ" ພິກຂຸອົງນັ້ນ ຄືສາຣີບຸດນັ້ນເອງ ທີ່ຜູ້ກ່າວໄວດີເພິ່ງກ່າວຊົມ

ວ່າ "ເປັນບຸດ ເປັນໂອຣົດຂອງພຣະຜູ້ມີພຣະພາກເຈົ້າ ເກີດແຕ່ປາກຂອງພຣະຜູ້ມີພຣະພາກເຈົ້າ ເກີດແຕ່ທຳ ອັນທຳເນຣະມິດແລ້ວ ເປັນທຳທາຍາດ ບໍ່ແມ່ນເປັນອາມິດທາຍາດ"

ພິກຂຸທັງຫຼາຍ ສາຣີບຸດປະກາດທຳມະຈັກ ອັນບໍ່ມີທຳອື່ນຍິ່ງກວ່າ ທີ່ຕະຖາຄົດປະກາດໄວ້ແລ້ວໂດຍລຳດັບ ໂດຍຖືກຕ້ອງຢ່າງແນ່ນອນ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ອະນຸປະທະສູດທີ ໑ ຈົບ**

# ໘. ສະວິໂສທະນະສູດ

## ວ່າດ້ວຍຫຼັກການກວດສອບ ໖ ປະການ

[໙໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ໃນທີ່ນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ ຍ່ອມພະຍາກອນອະຣະຫັຕຕະຜົນ "ຂ້າພະເຈົ້າຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ" ທ່ານທັງຫຼາຍ ບໍ່ຄວນຍິນດີ ບໍ່ຄວນຄັດຄ້ານ ຄຳກ່າວຂອງພິກຂຸອົງນັ້ນ ບໍ່ຍິນດີ ບໍ່ຄັດຄ້ານແລ້ວ ເພິ່ງຖາມບັນຫາວ່າ "ທ່ານຜູ້ມີອາຍຸ ໂວຫານ ໔ ປະການນີ້ທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ຖືກຕ້ອງແລ້ວ"

ໂວຫານ ໔ ປະການ ອັນໃດແດ່ ຄື

໑. ການກ່າວສິ່ງທີ່ໄດ້ເຫັນວ່າໄດ້ເຫັນ
໒. ການກ່າວສິ່ງທີ່ໄດ້ຟັງວ່າໄດ້ຟັງ

໓. ການກ່າວສິ່ງທີ່ໄດ້ເຂົ້າໃຈວ່າເຂົ້າໃຈ
໔. ການກ່າວສິ່ງທີ່ໄດ້ຮູ້ວ່າໄດ້ຮູ້

ທ່ານຜູ້ມີອາຍຸ ໂວຫານ ໔ ປະການນີ້ ທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສໍາມາສໍາພຸດທະເຈົ້າພຣະອົງນັ້ນ ຕັດໄວ້ຖືກຕ້ອງແລ້ວ ກໍຈິດຂອງທ່ານຜູ້ມີອາຍຸ ຜູ້ຮູ້ຢູ່ ເຫັນຢູ່ແນວໃດ ຈຶ່ງລຸດພົ້ນຈາກອາສະວະ ຍ້ອນບໍ່ຢຶດໝັ້ນໃນໂວຫານ ໔ ປະການນີ້ໄດ້”

ພິກຂຸທັງຫຼາຍ ພິກຂຸຜູ້ເປັນຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສໍາເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລໍາດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວຍ້ອນຮູ້ໂດຍຖືກຕ້ອງ ຈຶ່ງນັບວ່າມີທໍາສົມຄວນພະຍາກອນໄດ້ດັ່ງນີ້ວ່າ “ທ່ານຜູ້ມີອາຍຸ ຂ້າພະເຈົ້າບໍ່ຍິນດີ ບໍ່ຍິນຮ້າຍ ອັນກິເລດອາໄສບໍ່ໄດ້ ອັນກິເລດພົວພັນບໍ່ໄດ້ ລຸດພົ້ນແລ້ວ ພາກໄດ້ແລ້ວໃນສິ່ງທີ່ຕົນເຫັນແລ້ວ ມີຈິດທີ່ເຝິກໃຫ້ປາສະຈາກເຂດແດນຄືກິເລດໄດ້ແລ້ວຢູ່

ຂ້າພະເຈົ້າບໍ່ຍິນດີ ฯລฯ ໃນສິ່ງທີ່ຕົນໄດ້ຟັງແລ້ວ ฯລฯ
ຂ້າພະເຈົ້າບໍ່ຍິນດີ ฯລฯ ໃນສິ່ງທີ່ຕົນໄດ້ຮູ້ແລ້ວ ฯລฯ
ຂ້າພະເຈົ້າບໍ່ຍິນດີ ບໍ່ຍິນຮ້າຍ ອັນກິເລດອາໄສບໍ່ໄດ້ ອັນກິເລດພົວພັນບໍ່ໄດ້

ລຸດພົ້ນແລ້ວ ພາກໄດ້ແລ້ວໃນສິ່ງທີ່ຕົນໄດ້ຮູ້ ມີຈິດທີ່ເຝິກໃຫ້ປາສະຈາກເຂດແດນຄືກິເລດໄດ້ແລ້ວຢູ່ ຈິດຂອງຂ້າພະເຈົ້າຜູ້ຮູ້ຢູ່ ເຫັນຢູ່ແນວນີ້ແລ ຈຶ່ງລຸດພົ້ນຈາກອາສະວະ ຍ້ອນບໍ່ຢຶດໝັ້ນໃນໂວຫານ ໔ ປະການນີ້

ພິກຂຸທັງຫຼາຍ ຄໍາທີ່ພິກຂຸອົງນັ້ນກ່າວ ທ່ານທັງຫຼາຍຄວນຊົມຊື່ນຍິນດີວ່າ “ສາທຸ” ແລ້ວເພິ່ງຖາມບັນຫາຍິ່ງຂຶ້ນໄປວ່າ

## ຫຼັກການກວດສອບອຸປາທານຂັນ ໕ ປະການ

[໙໙] “ທ່ານຜູ້ມີອາຍຸ ອຸປາທານຂັນ ໕ ປະການນີ້ ທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະ ສໍາມາສໍາພຸດທະເຈົ້າພຣະອົງນັ້ນ ຕັດໄວ້ຖືກຕ້ອງແລ້ວ

ອຸປາທານຂັນ ໕ ປະການ ອັນໃດແດ່ ຄື

໑. ຣູປູປາທານະຂັນ
໒. ເວທະນູປາທານະຂັນ
໓. ສັນຍູປາທານະຂັນ
໔. ສັງຂາຣູປາທານະຂັນ

໕. ວິນຍານູປາທານະຂັນ

ທ່ານຜູ້ມີອາຍຸ ອຸປາທານຂັນ ໕ ປະການນີ້ ທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ຖືກຕ້ອງແລ້ວ ກໍຈິດຂອງທ່ານຜູ້ມີອາຍຸ ຜູ້ຮູ້ຢູ່ ເຫັນຢູ່ແນວໃດ ຈຶ່ງລຸດພົ້ນຈາກອາສະວະ ຍ້ອນບໍ່ຢຶດໝັ້ນໃນອຸປາທານຂັນ ໕ ປະການນີ້ໄດ້”

ພິກຂຸທັງຫຼາຍ ພິກຂຸຜູ້ເປັນຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວຍ້ອນຮູ້ໂດຍຖືກຕ້ອງ ຈຶ່ງນັບວ່າ ມີທຳອັນສົມຄວນຈະພະຍາກອນໄດ້ດັ່ງນີ້ວ່າ “ທ່ານຜູ້ມີອາຍຸ ຂ້າພະເຈົ້າຮູ້ແຈ້ງຮູບວ່າ “ບໍ່ມີກຳລັງ ປາສະຈາກຄວາມໜ້າຮັກ ບໍ່ເປັນທີ່ຕັ້ງແຫ່ງຄວາມຊື່ນໃຈ” ຈຶ່ງຮູ້ແຈ້ງວ່າ “ຈິດຂອງເຮົາລຸດພົ້ນແລ້ວ” ຍ້ອນຄວາມໝົດໄປຍ້ອນຄວາມຄາຍອອກ ຍ້ອນຄວາມດັບໄປ ຍ້ອນຄວາມສະລະໄປ ແລະ ຍ້ອນຄວາມສະລະຄືນເຊິ່ງອຸປາທານຂັນທີ່ຢຶດໝັ້ນໃນຮູບ ແລະອະນຸໄສຄືຄວາມຕັ້ງໃຈໝັ້ນ ແລະ ຄວາມປັກໃຈໝັ້ນໄດ້

ຂ້າພະເຈົ້າຮູ້ແຈ້ງເວທະນາ ฯລฯ
ຂ້າພະເຈົ້າຮູ້ແຈ້ງສັນຍາ ฯລฯ
ຂ້າພະເຈົ້າຮູ້ແຈ້ງສັງຂານ ฯລฯ

ຂ້າພະເຈົ້າຮູ້ແຈ້ງວິນຍານວ່າ “ບໍ່ມີກຳລັງ ປາສະຈາກຄວາມໜ້າຮັກ ບໍ່ເປັນທີ່ຕັ້ງແຫ່ງຄວາມຊື່ນໃຈ” ຈຶ່ງຮູ້ແຈ້ງວ່າ “ຈິດຂອງເຮົາລຸດພົ້ນແລ້ວ” ຍ້ອນຄວາມໝົດໄປຍ້ອນຄວາມຄາຍອອກ ຍ້ອນຄວາມດັບໄປ ຍ້ອນຄວາມສະລະໄປ ແລະ ຍ້ອນຄວາມສະລະຄືນເຊິ່ງອຸປາທານຂັນທີ່ຢຶດໝັ້ນໃນວິນຍານ ແລະ ອະນຸໄສຄືຄວາມຕັ້ງໃຈໝັ້ນ ແລະ ຄວາມປັກໃຈໝັ້ນໄດ້ ທ່ານຜູ້ມີອາຍຸ ຈິດຂອງຂ້າພະເຈົ້າຜູ້ຮູ້ຢູ່ ເຫັນຢູ່ແນວນີ້ ຈຶ່ງລຸດພົ້ນຈາກອາສະວະ ຍ້ອນບໍ່ຢຶດໝັ້ນໃນອຸປາທານຂັນ ໕ ປະການນີ້ໄດ້”

ພິກຂຸທັງຫຼາຍ ຄຳທີ່ພິກຂຸອົງນັ້ນກ່າວ ທ່ານທັງຫຼາຍຄວນຊົມຊື່ນຍິນດີວ່າ “ສາທຸ” ແລ້ວເພິ່ງຖາມບັນຫາຍິ່ງຂຶ້ນໄປ ວ່າ

## ຫຼັກການກວດສອບທາດ ໖ ປະການ

[໑໐໐] “ທ່ານຜູ້ມີອາຍຸ ທາດ ໖ ປະການນີ້ ທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດຈ້າພຣະອົງນັ້ນ ຕັດໄວ້ຖືກຕ້ອງແລ້ວ

ທາດ ໖ ປະການ ອັນໃດແດ່? ຄື

| | | | |
|---|---|---|---|
| ໑. ປະຖະວີທາດ | (ທາດດິນ) | ໒. ອາໂປທາດ | (ທາດນ້ຳ) |
| ໓. ເຕໂຊທາດ | (ທາດໄຟ) | ໔. ວາໂຍທາດ | (ທາດລົມ) |
| ໕. ອາກາສທາດ | (ທາດຄືອາກາດ) | ໖. ວິນຍານທາດ | (ທາດຄືວິນຍານ) |

ທ່ານຜູ້ມີອາຍຸ ທາດ ໖ ປະການນີ້ ທີ່ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ຖືກຕ້ອງແລ້ວ ກໍຈິດຂອງທ່ານຜູ້ມີອາຍຸ ຜູ້ຮູ້ຢູ່ ເຫັນຢູ່ແນວໃດ ຈຶ່ງລຸດພົ້ນຈາກອາສະວະ ຍ້ອນບໍ່ຍຶດໝັ້ນໃນທາດ ໖ ປະການນີ້ໄດ້"

ພິກຂຸທັງຫຼາຍ ພິກຂຸຜູ້ເປັນຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວຍ້ອນຮູ້ໂດຍຖືກຕ້ອງ ຈຶ່ງນັບວ່າ ມີທຳອັນສົມຄວນຈະພະຍາກອນໄດ້ວ່າ "ທ່ານຜູ້ມີອາຍຸ ຂ້າພະເຈົ້າບໍ່ໄດ້ຍຶດໝັ້ນປະຖະວີທາດໂດຍຄວາມເປັນອັດຕາ ແລະ ບໍ່ໄດ້ຍຶດໝັ້ນອັດຕາທີ່ອາໄສປະຖະວີທາດ" ຈຶ່ງຮູ້ແຈ້ງວ່າ "ຈິດຂອງເຮົາລຸດພົ້ນແລ້ວ" ຍ້ອນຄວາມໝົດໄປຍ້ອນຄວາມຄາຍອອກ ຍ້ອນຄວາມດັບໄປ ຍ້ອນຄວາມສະລະໄປ ແລະ ຍ້ອນຄວາມສະລະຄືນເຊິ່ງອຸປາທານຂັນທີ່ຍຶດໝັ້ນອາໄສປະຖະວີທາດ ແລະ ອະນຸໄສຄືຄວາມຕັ້ງໃຈໝັ້ນ ແລະ ຄວາມປັກໃຈໝັ້ນໄດ້

ຂ້າພະເຈົ້າບໍ່ໄດ້ຍຶດໝັ້ນ ອາໂປທາດ ຯລຯ
ຂ້າພະເຈົ້າບໍ່ໄດ້ຍຶດໝັ້ນ ເຕໂຊທາດ ຯລຯ
ຂ້າພະເຈົ້າບໍ່ໄດ້ຍຶດໝັ້ນ ວາໂຍທາດ ຯລຯ
ຂ້າພະເຈົ້າບໍ່ໄດ້ຍຶດໝັ້ນ ອາກາດທາດ ຯລຯ

ຂ້າບເຂົ້າບໍ່ໄດ້ຍຶດໝັ້ນ ວິນຍານທາດ ໂດຍຄວາມເປັນອັດຕາ ແລະ ບໍ່ໄດ້ຍຶດໝັ້ນອັດຕາອັນອາໄສວິນຍານທາດ ຈຶ່ງຮູ້ແຈ້ງວ່າ "ຈິດຂອງເຮົາລຸດພົ້ນແລ້ວ" ຍ້ອນຄວາມໝົດໄປຍ້ອນຄວາມຄາຍກຳໜັດ ຍ້ອນຄວາມດັບໄປ ຍ້ອນຄວາມສະລະໄປ ແລະ ຍ້ອນຄວາມສະລະຄືນເຊິ່ງອຸປາທານຂັນທີ່ຍຶດໝັ້ນອາໄສວິນຍານທາດ ແລະ ອະນຸໄສຄືຄວາມຕັ້ງໃຈໝັ້ນ ແລະ ຄວາມປັກໃຈໝັ້ນໄດ້ ທ່ານຜູ້ມີອາຍຸ ຈິດຂອງຂ້າພະເຈົ້າຜູ້ຮູ້ຢູ່ ເຫັນຢູ່ແນວນີ້ ຈຶ່ງລຸດພົ້ນຈາກອາສະວະ ຍ້ອນບໍ່ຍຶດໝັ້ນໃນທາດ ໖ ປະການນີ້ໄດ້"

ພິກຂຸທັງຫຼາຍ ຄຳທີ່ພິກຂຸອົງນັ້ນກ່າວ ທ່ານທັງຫຼາຍຄວນຊົມຊື່ນຍິນດີວ່າ "ສາທຸ" ແລ້ວເພິ່ງຖາມບັນຫາຍິ່ງຂຶ້ນໄປ ວ່າ

## ຫຼັກການກວດສອບອາຍະຕະນະ ໑໒ ປະການ

[໑໐໑] "ທ່ານຜູ້ມີອາຍຸ ກໍອາຍະຕະນະພາຍໃນ ແລະ ອາຍະຕະນະພາຍນອກແນວລະ ໖ ປະການນີ້ ທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະສໍາມາສໍາພຸດທະເຈົ້າພຣະອົງນັ້ນ ຕັດໄວ້ຖືກຕ້ອງແລ້ວ

ອາຍະຕະນະພາຍໃນ ແລະ ອາຍະຕະນະພາຍນອກແນວລະ ໖ ປະການ ອັນໃດແດ່ ຄື

໑. ຈັກຂຸ (ຕາ) ຄູ່ກັບຮູບ
໒. ໂສຕະ (ຫູ) ຄູ່ກັບສັດທະ (ສຽງ)
໓. ຄານະ (ດັງ) ຄູ່ກັບຄັນທະ (ກິ່ນ)
໔. ຊິວຫາ (ລີ້ນ) ຄູ່ກັບຣົດ
໕. ກາຍຄູ່ກັບໂຜດຖັບພະ
໖. ມະໂນ (ໃຈ) ຄູ່ກັບທໍາມາຣົມ

ທ່ານຜູ້ມີອາຍຸ ອາຍະຕະນະພາຍໃນ ແລະ ອາຍະຕະນະພາຍນອກແນວລະ ໖ ປະການນີ້ ທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະສໍາມາສໍາພຸດທະເຈົ້າພຣະອົງນັ້ນ ຕັດໄວ້ຖືກຕ້ອງແລ້ວ ກໍຈິດຂອງທ່ານຜູ້ມີອາຍຸ ຜູ້ຮູ້ຢູ່ ເຫັນຢູ່ແນວໃດ? ຈຶ່ງລຸດພົ້ນຈາກອາສະວະ ຍ້ອນບໍ່ຢຶດໝັ້ນໃນອາຍະຕະນະພາຍໃນ ແລະ ອາຍະຕະນະພາຍນອກແນວລະ ໖ ປະການນີ້ໄດ້"

ພິກຂຸທັງຫຼາຍ ພິກຂຸຜູ້ເປັນຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສໍາເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລໍາດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວຍ້ອນຮູ້ໂດຍຖືກຕ້ອງ ຈຶ່ງນັບວ່າ ມີທໍາອັນສົມຄວນຈະພະຍາກອນໄດ້ວ່າ "ທ່ານຜູ້ມີອາຍຸ ຂ້າພະເຈົ້າຮູ້ແຈ້ງວ່າ "ຈິດຂອງຂ້າພະເຈົ້າລຸດພົ້ນແລ້ວ" ຍ້ອນຄວາມໝົດໄປຍ້ອນຄວາມຄາຍອອກ ຍ້ອນຄວາມດັບໄປ ຍ້ອນຄວາມສະລະໄປ ແລະ ຍ້ອນຄວາມສະລະຄືນເຊິ່ງຄວາມພໍໃຈ ຄວາມກໍາໜັດ ຄວາມຍິນດີ ຄວາມຢາກ ຄວາມຢຶດໝັ້ນ ອຸປາທານ ແລະ ອະນຸໄສຄືຄວາມຕັ້ງໃຈໝັ້ນ ແລະຄວາມປັກໃຈໝັ້ນໃນຈັກຂຸ ໃນຮູບ ໃນຈັກຂຸວິນຍານ ແລະ ໃນທໍາທີ່ເພິ່ງຮູ້ແຈ້ງທາງຈັກຂຸວິນຍານ

ຂ້າພະເຈົ້າຮູ້ແຈ້ງວ່າ ຯລຯ ໃນໂສຕະ ໃນສຽງ ໃນໂສຕະວິນຍານ ຯລຯ
ຂ້າພະເຈົ້າຮູ້ແຈ້ງວ່າ ຯລຯ ໃນຄານະ ໃນກິ່ນ ໃນຄານະວິນຍານ ຯລຯ
ຂ້າພະເຈົ້າຮູ້ແຈ້ງວ່າ ຯລຯ ໃນຊິວຫາ ໃນຣົດ ໃນຊິວຫາວິນຍານ ຯລຯ
ຂ້າພະເຈົ້າຮູ້ແຈ້ງວ່າ ຯລຯ ໃນກາຍ ໃນໂຜດຖັບພະ ໃນກາຍວິນຍານ ຯລຯ

ຂ້າພະເຈົ້າຮູ້ແຈ້ງວ່າ "ຈິດຂອງຂ້າພະເຈົ້າລຸດພົ້ນແລ້ວ" ຍ້ອນຄວາມໝົດໄປຍ້ອນຄວາມຄາຍອອກ ຍ້ອນຄວາມດັບໄປ ຍ້ອນຄວາມສະລະໄປ ແລະ ຍ້ອນຄວາມສະລະຄືນເຊິ່ງຄວາມ

ພໍໃຈ ຄວາມກຳໜັດ ຄວາມຍິນດີ ຄວາມຍາກ ຄວາມຍຶດໝັ້ນ ອຸປາທານ ແລະ ອະນຸໄສຄື ຄວາມຕັ້ງໃຈໝັ້ນ ແລະ ຄວາມປັກໃຈໝັ້ນໃນມະໂນ ໃນທຳມາຣົມ ໃນມະໂນວິນຍານ ແລະ ໃນທຳທີ່ເພິ່ງຮູ້ແຈ້ງທາງມະໂນວິນຍານ ທ່ານຜູ້ມີອາຍຸ ຈິດຂອງຂ້າພະເຈົ້າຜູ້ຮູ້ຢູ່ ເຫັນຢູ່ແບບນີ້ຈຶ່ງລຸດພົ້ນຈາກອາສະວະ ຍ້ອນບໍ່ຍຶດໝັ້ນໃນອາຍະຕະນະພາຍໃນ ແລະ ອາຍະຕະນະພາຍນອກແນວລະ ໖ ປະການນີ້ໄດ້”

ພິກຂຸທັງຫຼາຍ ຄຳທີ່ພິກຂຸອີງນັ້ນກ່າວ ທ່ານທັງຫຼາຍ ຄວນຊົມຊື່ນຍິນດີວ່າ “ສາທຸ” ແລ້ວເພິ່ງຖາມບັນຫາຍິ່ງຂຶ້ນໄປວ່າ

## ຫຼັກການກວດສອບເລື້ອງການຖອນອະນຸໄສ

[໑໐໘] “ທ່ານຜູ້ມີອາຍຸຮູ້ຢູ່ ເຫັນຢູ່ແນວໃດ ຈຶ່ງຖອນອະຫັງການ ມະມັງການ ແລະ ມານານຸໄສ ໃນກາຍອັນມີວິນຍານນີ້ ແລະ ໃນສັບພະນິມິດພາຍນອກໄດ້ດ້ວຍດີ”

ພິກຂຸທັງຫຼາຍ ພິກຂຸຜູ້ເປັນຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວຍ້ອນຮູ້ໂດຍຖືກຕ້ອງ ຈຶ່ງນັບວ່າມີທຳອັນສົມຄວນຈະພະຍາກອນໄດ້ວ່າ “ທ່ານຜູ້ມີອາຍຸ ແຕ່ກ່ອນທີ່ຂ້າພະເຈົ້າຍັງຄອງເຮືອນຢູ່ ຍັງເປັນຜູ້ບໍ່ຮູ້ ພຣະຕະຖາຄົດ ຫຼື ສາວົກຂອງພຣະຕະຖາຄົດໄດ້ສະແດງທຳແກ່ຂ້າພະເຈົ້ານັ້ນ ຂ້າພະເຈົ້າໄດ້ສະດັບທຳນັ້ນແລ້ວ ຈຶ່ງເກີດສັດທາໃນພຣະຕະຖາຄົດ ເມື່ອມີສັດທາ ຍ່ອມຄິດວ່າ “ການຢູ່ຄອງເຮືອນເປັນເລື້ອງໜ້າອຶດອັດ ເປັນທາງມາແຫ່ງທຸລີການບວດເປັນທາງປອດໂປ່ງ ການທີ່ຜູ້ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນຄົບຖ້ວນຄືຫອຍສັງຂັດ ບໍ່ແມ່ນເຮັດໄດ້ງ່າຍ ທາງທີ່ດີ ເຮົາຄວນແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດເທີ້ນ”

## ສິກຂາແລະສາຊີບຂອງພິກຂຸ

ຕໍ່ມາ ຂ້າພະເຈົ້າລະຖິ້ມກອງໂພຄະສົມບັດນ້ອຍໃຫຍ່ ແລະ ເຄືອຍາດນ້ອຍໃຫຍ່ ແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ ຂ້າພະເຈົ້າບວດແລ້ວແນວນີ້ ເຖິງຄວາມເປັນຜູ້ມີສິກຂາ ແລະ ສາຊີບຂອງພິກຂຸທັງຫຼາຍ ຄື

໑. ລະ ເວັ້ນຂາດຈາກການຂ້າສັດ ຄື ວາງທັນດາວຸດແລະສັດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່

໒. ລະ ເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ຄືຮັບເອົາແຕ່ສິ່ງຂອງທີ່ເຂົາໃຫ້ ມຸ້ງຫວັງແຕ່ສິ່ງຂອງທີ່ເຂົາໃຫ້ ບໍ່ເປັນຂີ້ລັກ ເປັນຄົນສະອາດຢູ່

໓. ລະພຶດຕິກຳອັນເປັນຂ້າເສິກຕໍ່ພົມມະຈັນ ຄື ປະພຶດພົມມະຈັນ ເວັ້ນຫ່າງໄກຈາກເມຖຸນທຳອັນເປັນກິດຂອງຊາວບ້ານ

໔. ລະ ເວັ້ນຂາດຈາກການເວົ້າຕົວະ ຄື ເວົ້າແຕ່ຄຳສັດ ດຳລົງຄວາມສັດ ມີຄຳເວົ້າເປັນຫຼັກ ເຊື່ອຖືໄດ້ ບໍ່ຫຼອກລວງຊາວໂລກ

໕. ລະ ເວັ້ນຂາດຈາກການເວົ້າສັບສໍ່ ຄື ຟັງຄວາມຈາກຝ່າຍນີ້ແລ້ວ ບໍ່ໄປບອກຝ່າຍນັ້ນ ເພື່ອທຳລາຍຝ່າຍນີ້ ຫຼື ຟັງຄວາມຝ່າຍນັ້ນແລ້ວ ບໍ່ມາບອກຝ່າຍນີ້ ເພື່ອທຳລາຍຝ່າຍນັ້ນ ສະມານຄົນທີ່ແຕກກັນ ສົ່ງເສີມຄົນທີ່ປອງດອງກັນ ຊົມຊື່ນ ຍິນດີ ເພີດເພີນຕໍ່ຜູ້ທີ່ສາມັກຄີກັນ ເວົ້າແຕ່ຄຳເວົ້າທີ່ສ້າງສັນຄວາມສາມັກຄີ

໖. ລະ ເວັ້ນຂາດຈາກການເວົ້າຄຳຫຍາບ ຄື ເວົ້າແຕ່ຄຳບໍ່ມີໂທດ ມ່ວນ ໜ້າຮັກຈັບໃຈ ເປັນຄຳຂອງຊາວເມືອງ ຄົນສ່ວນຫຼາຍຮັກແພງ ພໍໃຈ

໗. ລະ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ຄື ເວົ້າຖືກເວລາ ເວົ້າຄຳຈິງ ເວົ້າອີງປະໂຫຍດ ເວົ້າອີງທຳ ເວົ້າອີງວິໄນ ເວົ້າຄຳທີ່ມີຫຼັກຖານ ມີທີ່ອ້າງອີງ ມີທີ່ກຳນົດ ປະກອບດ້ວຍປະໂຫຍດ ເໝາະແກ່ການເວລາ

໘. ເວັ້ນຂາດຈາກການພາກພີຊະຄາມ[9] ແລະ ພູຕະຄາມ[6]

໙. ສັນຄາບດຽວ ບໍ່ສັນຕອນກາງຄືນ ເວັ້ນຂາດຈາກການສັນໃນເວລາວິການ

໑໐. ເວັ້ນຂາດຈາກການຟ້ອນລຳ ຂັບຮ້ອງ ເສບດົນຕີ ແລະ ເບິ່ງການລະຫຼິ້ນທີ່ເປັນຂ້າ ເສິກແກ່ກຸສົນ

໑໑. ເວັ້ນຂາດຈາກການທັດຊົງ ປະດັບ ຕົກແຕ່ງຮ່າງກາຍດ້ວຍພວງດອກໄມ້ຂອງຫອມແລະເຄື່ອງຕົກແຕ່ງຜິວ ອັນເປັນລັກສະນະແຫ່ງການແຕ່ງໂຕ

໑໒. ເວັ້ນຂາດຈາກບ່ອນນອນສູງໃຫຍ່

໑໓. ເວັ້ນຂາດຈາກການຮັບ ຄຳແລະເງິນ

໑໔. ເວັ້ນຂາດຈາກການຮັບ ທັນຍາຫານດິບ

໑໕. ເວັ້ນຂາດຈາກການຮັບ ຊີ້ນດິບ

໑໖. ເວັ້ນຂາດຈາກການຮັບ ສະຕີແລະກຸມາຣີ

໑໗. ເວັ້ນຂາດຈາກການຮັບ ຂ້າທາດຍິງແລະຂ້າທາດຊາຍ

໑໘. ເວັ້ນຂາດຈາກການຮັບ ແບ້ແລະແກະ

໑໙. ເວັ້ນຂາດຈາກການຮັບ ໄກ່ແລະ ໝູ

໒໐. ເວັ້ນຂາດຈາກການຮັບ ຊ້າງ ງົວ ມ້າ ແລະລາ

໒໑. ເວັ້ນຂາດຈາກການຮັບ ຮົ້ວສວນໄຮ່ນາແລະທີ່ດິນ

໒໒. ເວັ້ນຂາດຈາກການເຮັດໜ້າທີ່ເປັນໂຕແທນແລະຜູ້ສື່ສານ

໔໓. ເວັ້ນຂາດຈາກການຊື້ຂາຍ
໔໔. ເວັ້ນຂາດຈາກການໂກງດ້ວຍຕາຊິງ ດ້ວຍຂອງປອມ ແລະດ້ວຍເຄື່ອງຕວງວັດ
໔໕. ເວັ້ນຂາດຈາກການຮັບສິນເທິງ ການລໍ້ລວງ ແລະການຫຼອກລວງ
໔໖. ເວັ້ນຂາດຈາກການຕັດ (ອະໄວຍະວະ) ການຂ້າ ການຄຸມຂັງ ການແລ່ນຕີຍາດຊິງ ການປຸ້ນ ແລະ ການຂົ່ມຂູ່ເອົາຊັບ

ຂ້າພະເຈົ້ານັ້ນ ເປັນຜູ້ສັນໂດດດ້ວຍຈີວອນພໍຄຸ້ມຮ່າງກາຍ ແລະ ບິນທະບາດພໍອີ່ມທ້ອງ ຈະໄປ ບ່ອນໃດ ໆ ກໍໄປໄດ້ທັນທີ ເໝືອນນົກບິນໄປບ່ອນໃດ ໆ ກໍມີແຕ່ປີກເປັນພາລະ ຂ້າພະເຈົ້ານັ້ນ ປະກອບດ້ວຍອະຣິຍະສີນຂັນແບບນີ້ແລ້ວ ຍ່ອມສະເຫວີຍສຸກອັນປາສະຈາກໂທດໃນພາຍໃນ

[໑໐໓] ຂ້າພະເຈົ້ານັ້ນ ເຫັນຮູບທາງຕາແລ້ວ ບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳຄືອະພິດຊາ ແລະໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ

ຟັງສຽງທາງຫູແລ້ວ ฯລฯ
ດົມກິ່ນທາງດັງແລ້ວ ฯລฯ
ຊີມຣົດທາງລີ້ນແລ້ວ ฯລฯ
ຖືກຕ້ອງໂຜດຖັບພະທາງກາຍແລ້ວ ฯລฯ

ຮູ້ແຈ້ງທຳມາຣົມທາງໃຈແລ້ວ ບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳຄືອະພິດຊາ ແລະ ໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ຂ້າພະເຈົ້ານັ້ນປະກອບດ້ວຍອະຣິຍະອິນຊີສັງວອນແບບນີ້ແລ້ວ ຍ່ອມສະເຫວີຍສຸກອັນບໍ່ຜະສົມດ້ວຍກິເລດໃນພາຍໃນ

ຂ້າພະເຈົ້ານັ້ນ ທຳຄວາມຮູ້ສຶກໂຕໃນການກ້າວໄປ ການຖອຍກັບການແນມເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດແລະຈີວອນ ການສັນ ການດື່ມ ການຫຍ້ຳ ການກິນ ການຖ່າຍອຸດຈາຣະ ປັດສາວະ ການຍ່າງ ການຢືນ ການນັ່ງ ການນອນ ການຕື່ນ ການເວົ້າ ການນິ່ງ

ຂ້າພະເຈົ້ານັ້ນ ປະກອບດ້ວຍອະຣິຍະສີນຂັນ ອະຣິຍະອິນຊີສັງວອນ ແລະ ອະຣິຍະສະຕິສຳປະຊັນຍະ ແລ້ວພັກຢູ່ໃນເສນາສະນະອັນງຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູ ຊອກເຂົາ ຖ້ຳ ປ່າຊ້າ ປ່າຣົກ ກາງແຈ້ງ ກອງເຟືອງ ຂ້າພະເຈົ້າກັບຈາກບິນທະບາດ ພາຍຫຼັງສັນພັດຕາຫານສຳເລັດແລ້ວ ນັ່ງຂັດສະມາທິ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ

ຂ້າພະເຈົ້ານັ້ນ ລະອະພິດຊາໃນໂລກ ມີໃຈປາສະຈາກອະພິດຊາ ຊໍາຣະຈິດໃຫ້ບໍລິສຸດຈາກອະພິດຊາ ລະຄວາມມຸ້ງຮ້າຍຄືພະຍາບາດ ມີຈິດບໍ່ພະຍາບາດ ມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ ຊໍາຣະຈິດໃຫ້ບໍລິສຸດຈາກຄວາມມຸ້ງຮ້າຍຄືພະຍາບາດ ລະຖີນະມິດທະ ມີຈິດປາສະຈາກຖີນະມິດທະ ກໍານົດແສງສະຫວ່າງ ມີສະຕິສໍາປະຊັນຍະ ຊໍາຣະຈິດໃຫ້ບໍລິສຸດຈາກຖີນະມິດທະ ລະອຸດທັດຈະກຸກກຸດຈະ ເປັນຜູ້ບໍ່ຟຸ້ງຊ່ານ ມີຈິດສະງົບພາຍໃນ ຊໍາຣະຈິດໃຫ້ບໍລິສຸດຈາກອຸດທັດຈະກຸກກຸດຈະ ລະວິຈິກິດສາ ຂ້າມພົ້ນວິຈິກິດສາໄດ້ແລ້ວ ບໍ່ມີຄວາມສົງໄສໃນກຸສົນທໍາທັງຫຼາຍຢູ່ ຊໍາຣະຈິດໃຫ້ບໍລິສຸດຈາກວິຈິກິດສາ

[໑໐໘] ຂ້າພະເຈົ້ານັ້ນ ລະນິວອນ ໕ ປະການນີ້ ທີ່ເຮັດໃຫ້ຈິດເສົ້າໝອງ ບັ່ນທອນກໍາລັງປັນຍາ ສະຫງັດຈາກກາມແລະອະກຸສົນທໍາທັງຫຼາຍແລ້ວ ບັນລຸປະຖົມຊານ ທີ່ມີວິຕົກ ວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິ ແລະ ສຸກອັນເກີດຈາກສະມາທິ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸຈະຕຸດຖະຊານ ຯລຯ ຢູ່

ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແບບນີ້ ຂ້າພະເຈົ້ານັ້ນນ້ອມຈິດໄປເພື່ອອາສະວັກຂະຍະຍານ ຮູ້ແຈ້ງຕາມຄວາມເປັນຈິງວ່າ “ນີ້ທຸກ ນີ້ທຸກຂະສະມຸທັຍ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ນີ້ອາສະວະ ນີ້ອາສະວະສະມຸໄທ ນີ້ອາສະວະນິໂຣດ ນີ້ອາສະວະນິໂຣທະຄາມີນີປະຕິປະທາ”

ເມື່ອຂ້າພະເຈົ້າຮູ້ເຫັນຢູ່ແບບນີ້ ຈິດຍ່ອມລຸດພົ້ນຈາກກາມາສະຫວະ ພະວາສະວະ ແລະອະວິດຊາສະຫວະ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ “ລຸດພົ້ນແລ້ວ” ຮູ້ແຈ້ງວ່າ “ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສໍາເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແບບນີ້ອີກຕໍ່ໄປ” ທ່ານຜູ້ມີອາຍຸ ຂ້າພະເຈົ້າຮູ້ຢູ່ເຫັນຢູ່ແບບນີ້ ຈຶ່ງຖອນອະຫັງການ ມະມັງການ ແລະ ມານານຸໄສໃນກາຍທີ່ມີວິນຍານນີ້ ແລະ ໃນສັບພະນິມິດພາຍນອກໄດ້

ພິກຂຸທັງຫຼາຍ ຄໍາທີ່ພິກຂຸອີງນັ້ນກ່າວ ທ່ານທັງຫຼາຍຄວນຊົມຊື່ນຍິນດີວ່າ “ສາທຸ” ແລ້ວເພິ່ງກ່າວແບບນີ້ວ່າ “ທ່ານຜູ້ມີອາຍຸ ເປັນລາບຂອງເຮົາທັງຫຼາຍ ເຮົາທັງຫຼາຍໄດ້ດີແລ້ວ ທີ່ພິຈາລະນາເຫັນທ່ານຜູ້ມີອາຍຸເຊັ່ນທ່ານເປັນເພື່ອນພົມມະຈາຣີ”

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ສະວິໂສທະນະສູດທີ່ ໘ ຈົບ**

# ၈. ສັບປຸຣິສະສູດ

## ວ່າດ້ວຍທຳຂອງສັດຕະບຸຣຸດແລະທຳຂອງອະສັດຕະບຸຣຸດ

[໑໐໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດ ວ່າ

"ພິກຂຸທັງຫຼາຍ ເຮົາຈັກສະແດງທຳຂອງສັດຕະບຸຣຸດ ແລະ ທຳຂອງອະສັດຕະບຸຣຸດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງທຳຂອງສັດຕະບຸຣຸດ ແລະ ທຳຂອງອະສັດຕະບຸຣຸດນັ້ນ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ເມື່ອ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ທຳຂອງອະສັດຕະບຸຣຸດ ເປັນແນວໃດ?"

ຄື ອະສັດຕະບຸຣຸດໃນໂລກນີ້ ເປັນຜູ້ອອກຈາກຕະກູນສູງບວດແລ້ວ ທ່ານຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ເຮົາເປັນຜູ້ອອກຈາກຕະກູນສູງບວດ ສ່ວນພິກຂຸອື່ນເຫຼົ່ານີ້ ບໍ່ໄດ້ເປັນຜູ້ອອກຈາກຕະກູນສູງບວດ" ຍ້ອນຄວາມເປັນຜູ້ມີຕະກູນສູງນັ້ນ ອະສັດຕະບຸຣຸດນັ້ນ ຈຶ່ງຍົກຕົນຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງອະສັດຕະບຸຣຸດ

ສ່ວນສັດຕະບຸຣຸດ ຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ຍ້ອນຄວາມເປັນຜູ້ມີຕະກູນສູງ ທຳຄືໂລພະຍ່ອມບໍ່ເຖິງຄວາມໝົດໄ ປທຳຄືໂທສະຍ່ອມບໍ່ເຖິງຄວາມໝົດໄປ ຫຼື ທຳຄືໂມຫະຍ່ອມບໍ່ເຖິງຄວາມໝົດໄປ ແມ່ນຖ້າ ພິກຂຸບໍ່ແມ່ນເປັນຜູ້ອອກຈາກຕະກູນສູງບວດແລ້ວ ແຕ່ເປັນຜູ້ປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບ ປະພຶດຕາມທຳ ທ່ານກໍເປັນຜູ້ຄວນບູຊາ ຄວນສັນເສີນ ໃນໝູ່ພິກຂຸນັ້ນ" ຍ້ອນຄວາມເປັນຜູ້ມີຕະກູນສູງນັ້ນ ສັດຕະບຸຣຸດນັ້ນ ຈຶ່ງເຮັດຂໍ້ປະຕິບັດທີ່ນັ້ນໄວ້ໃນພາຍໃນ ແລ້ວບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າທຳຂອງສັດຕະບຸຣຸດ (໑)

ອີກປະການໜຶ່ງ ອະສັດຕະບຸຣຸດເປັນຜູ້ອອກຈາກຕະກູນໃຫຍ່ບວດ ຯລຯ ເປັນຜູ້ອອກຈາກຕະກູນມີໂພຄະຫຼາຍບວດ ຯລຯ ເປັນຜູ້ອອກຈາກຕະກູນມີໂພຄະໂອລານບວດ ອະສັດຕະບຸຣຸດນັ້ນຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ເຮົາເປັນຜູ້ອອກຈາກຕະກູນມີໂພຄະໂອລານບວດ ສ່ວນພິກຂຸອື່ນເຫຼົ່ານີ້ ບໍ່ແມ່ນເປັນຜູ້ອອກຈາກຕະກູນມີໂພຄະໂອລານບວດ" ຍ້ອນຄວາມເປັນຜູ້ມີໂພຄະໂອລານນັ້ນ ອະສັດຕະບຸຣຸດນັ້ນຈຶ່ງຍົກຕົນ ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງອະສັດຕະບຸຣຸດ

ສ່ວນສັດຕະບຸຣຸດຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ຍ້ອນຄວາມເປັນຜູ້ມີໂພຄະໂອລານ ທຳຄືໂລພະຍ່ອມບໍ່ເຖິງຄວາມໝົດໄປ ທຳຄືໂທສະຍ່ອມບໍ່ເຖິງຄວາມໝົດໄປ ຫຼື ທຳຄືໂມຫະຍ່ອມບໍ່ເຖິງຄວາມໝົດໄປ ແມ່ນຖ້າ ພິກຂຸບໍ່ແມ່ນເປັນຜູ້ອອກຈາກຕະກູນມີໂພຄະໂອລານບວດແລ້ວ ແຕ່ເປັນຜູ້ປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບ ປະພຶດຕາມທຳ ທ່ານກໍເປັນຜູ້ຄວນບູຊາ ຄວນສັນເສີນ ໃນໝູ່ພິກຂຸນັ້ນ" ຍ້ອນຄວາມເປັນຜູ້ມີໂພຄະໂອລານນັ້ນ ສັດຕະບຸຣຸດນັ້ນ ຈຶ່ງເຮັດຂໍ້ປະຕິບັດທີ່ນັ້ນໄວ້ໃນພາຍໃນ ແລ້ວບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງສັດຕະບຸຣຸດ (໘-໕)

[໑໐໖] ອີກປະການໜຶ່ງ ອະສັດຕະບຸຣຸດເປັນຜູ້ມີຊື່ສຽງ ມີຍົດ໑ ຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ເຮົາມີຊື່ສຽງ ມີຍົດ ສ່ວນພິກຂຸອື່ນເຫຼົ່ານີ້ ເປັນຜູ້ບໍ່ມີຊື່ສຽງ ມີສັກນ້ອຍ" ຍ້ອນຄວາມເປັນຜູ້ມີຊື່ສຽງນັ້ນ ອະສັດຕະບຸຣຸດນັ້ນຈຶ່ງຍົກຕົນ ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງອະສັດຕະບຸຣຸດ

ສ່ວນສັດຕະບຸຣຸດຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ຍ້ອນຄວາມເປັນຜູ້ມີຊື່ສຽງ ທຳຄືໂລພະຍ່ອມບໍ່ເຖິງຄວາມໝົດໄປ ທຳຄືໂທສະຍ່ອມບໍ່ເຖິງຄວາມໝົດໄປ ຫຼື ທຳຄືໂມຫະຍ່ອມບໍ່ເຖິງຄວາມໝົດໄປແມ່ນຖ້າພິກຂຸບໍ່ແມ່ນເປັນຜູ້ມີຊື່ສຽງ ບໍ່ແມ່ນເປັນຜູ້ມີຍົດ ແຕ່ເປັນຜູ້ປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບ ປະພຶດຕາມທຳ ທ່ານກໍເປັນຜູ້ຄວນບູຊາ ຄວນສັນເສີນ ໃນໝູ່ພິກຂຸນັ້ນ" ຍ້ອນຄວາມເປັນຜູ້ມີຊື່ສຽງນັ້ນ ສັດຕະບຸຣຸດນັ້ນ ຈຶ່ງເຮັດຂໍ້ປະຕິບັດທີ່ນັ້ນໄວ້ໃນພາຍໃນ ແລ້ວບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງສັດຕະບຸຣຸດ (໕)

ອີກປະການໜຶ່ງ ອະສັດຕະບຸຣຸດໄດ້ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ ຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ເຮົາເປັນຜູ້ໄດ້ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ ສ່ວນພິກຂຸອື່ນເຫຼົ່ານີ້ ເປັນຜູ້ບໍ່ໄດ້ຈີວອນ ບິນທະ

ບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ" ຍ້ອນການໄດ້ນັ້ນ ອະສັດຕະບຸຣຸດນັ້ນຈຶ່ງຍົກຕົນ ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງອະສັດຕະບຸຣຸດ

ສ່ວນສັດຕະບຸຣຸດຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ຍ້ອນການໄດ້ນັ້ນ ທຳຄືໂລພະຍ່ອມບໍ່ເຖິງຄວາມໝົດໄປ ທຳຄືໂທສະຍ່ອມບໍ່ເຖິງຄວາມໝົດໄປ ຫຼື ທຳຄືໂມຫະຍ່ອມບໍ່ເຖິງຄວາມໝົດໄປແມ່ນຖ້າພິກຂຸບໍ່ເປັນຜູ້ໄດ້ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ ແຕ່ເປັນຜູ້ປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບ ປະພຶດຕາມທຳ ທ່ານກໍເປັນຜູ້ຄວນບູຊາ ຄວນສັນເສີນ ໃນໝູ່ພິກຂຸນັ້ນ" ຍ້ອນການໄດ້ນັ້ນ ສັດຕະບຸຣຸດນັ້ນ ຈຶ່ງເຮັດຂໍ້ປະຕິບັດທີ່ນັ້ນໄວ້ໃນພາຍໃນ ແລ້ວບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງສັດຕະບຸຣຸດ (໖)

ອີກປະການໜຶ່ງ ອະສັດຕະບຸຣຸດເປັນພະຫູສູດ ຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ເຮົາເປັນພະຫູສູດ ສ່ວນພິກຂຸອື່ນເຫຼົ່ານີ້ ບໍ່ເປັນພະຫູສູດ" ຍ້ອນຄວາມເປັນພະຫູສູດນັ້ນ ອະສັດຕະບຸຣຸດນັ້ນຈຶ່ງຍົກຕົນ ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ທຳນີ້ຊື່ວ່າ ທຳຂອງອະສັດຕະບຸຣຸດ

ສ່ວນສັດຕະບຸຣຸດຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ຍ້ອນຄວາມເປັນພະຫູສູດ ທຳຄືໂລພະຍ່ອມບໍ່ເຖິງຄວາມໝົດໄປ ທຳຄືໂທສະຍ່ອມບໍ່ເຖິງຄວາມໝົດໄປ ຫຼື ທຳຄືໂມຫະຍ່ອມບໍ່ເຖິງຄວາມໝົດໄປແມ່ນຖ້າພິກຂຸບໍ່ເປັນພະຫູສູດ ແຕ່ເປັນຜູ້ປະຕິບັດທຳສົມຄວນແກ່ທຳ ປະຕິບັດຖືກຕ້ອງ ປະພຶດຕາມທຳ ທ່ານກໍເປັນຜູ້ຄວນບູຊາ ຄວນສັນເສີນ ໃນໝູ່ພິກຂຸນັ້ນ" ຍ້ອນຄວາມເປັນພະຫູສູດນັ້ນ ສັດຕະບຸຣຸດນັ້ນ ຈຶ່ງເຮັດຂໍ້ປະຕິບັດທີ່ນັ້ນໄວ້ໃນພາຍໃນ ແລ້ວບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງສັດຕະບຸຣຸດ (໗)

ອີກປະການໜຶ່ງ ອະສັດຕະບຸຣຸດເປັນຜູ້ຊົງຈຳວິໄນ ຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ເຮົາເປັນຜູ້ຊົງຈຳວິໄນ ສ່ວນພິກຂຸອື່ນເຫຼົ່ານີ້ ບໍ່ເປັນຜູ້ຊົງຈຳວິໄນ" ຍ້ອນຄວາມເປັນຜູ້ຊົງຈຳວິໄນນັ້ນ ອະສັດຕະບຸຣຸດນັ້ນຈຶ່ງຍົກຕົນ ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງອະສັດຕະບຸຣຸດ

ສ່ວນສັດຕະບຸຣຸດຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ຍ້ອນຄວາມເປັນຜູ້ຊົງຈຳວິໄນນັ້ນ ທຳຄື

ໂລພະຍ່ອມບໍ່ເຖິງຄວາມໝົດໄປທຳຄືໂທສະຍ່ອມບໍ່ເຖິງຄວາມໝົດໄປຫຼືທຳຄືໂມຫະຍ່ອມບໍ່ເຖິງຄວາມໝົດໄປແມ່ນຖ້າພິກຂຸບໍ່ເປັນຜູ້ຊົງຈຳວິໄນ ແຕ່ເປັນຜູ້ປະຕິບັດທຳສົມຄວນແກ່ທຳ ປະຕິບັດຖືກຕ້ອງ ປະພຶດຕາມທຳ ທ່ານກໍເປັນຜູ້ຄວນບູຊາ

ຄວນສັນເສີນ ໃນໝູ່ພິກຂຸນັ້ນ" ຍ້ອນຄວາມເປັນຜູ້ຊົງຈຳວິໄນນັ້ນ ສັດຕະບຸຣຸດນັ້ນຈຶ່ງເຮັດຂໍ້ປະຕິບັດທີ່ນັ້ນໄວ້ໃນພາຍໃນ ແລ້ວບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງສັດຕະບຸຣຸດ (໗)

ອີກປະການໜຶ່ງ ອະສັດຕະບຸຣຸດເປັນພຣະທຳມະກະຖຶກ ຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ເຮົາເປັນພຣະທຳມະກະຖຶກ ສ່ວນພິກຂຸອື່ນເຫຼົ່ານັ້ນບໍ່ເປັນພຣະທຳມະກະຖຶກ" ຍ້ອນຄວາມເປັນພຣະທຳມະກະຖຶກນັ້ນ ອະສັດຕະບຸຣຸດນັ້ນຈຶ່ງຍົກຕົນ ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງອະສັດຕະບຸຣຸດ

ສ່ວນສັດຕະບຸຣຸດຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ຍ້ອນຄວາມເປັນພຣະທຳມະກະຖຶກ ທຳຄືໂລພະຍ່ອມບໍ່ເຖິງຄວາມໝົດໄປ ທຳຄືໂທສະຍ່ອມບໍ່ເຖິງຄວາມໝົດໄປ ຫຼື ທຳຄືໂມຫະຍ່ອມບໍ່ເຖິງຄວາມໝົດໄປ ແມ່ນຖ້າພິກຂຸບໍ່ເປັນພຣະທຳມະກະຖຶກ ແຕ່ເປັນຜູ້ປະຕິບັດທຳສົມຄວນແກ່ທຳປະຕິບັດຊອບ ປະພຶດຕາມທຳ ທ່ານກໍເປັນຜູ້ຄວນບູຊາ ຄວນສັນເສີນ ໃນໝູ່ພິກຂຸນັ້ນ" ຍ້ອນຄວາມເປັນພຣະທຳມະກະຖຶກນັ້ນ ສັດຕະບຸຣຸດນັ້ນ ຈຶ່ງເຮັດຂໍ້ປະຕິບັດທີ່ນັ້ນໄວ້ໃນພາຍໃນ ແລ້ວບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງສັດຕະບຸຣຸດ (໘)

[໑໐໗] ອີກປະການໜຶ່ງ ອະສັດຕະບຸຣຸດເປັນຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ເຮົາເປັນຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ສ່ວນພິກຂຸອື່ນເຫຼົ່ານັ້ນບໍ່ເປັນຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ" ຍ້ອນຄວາມເປັນຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດນັ້ນ ອະສັດຕະບຸຣຸດນັ້ນຈຶ່ງຍົກຕົນ ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງອະສັດຕະບຸຣຸດ

ສ່ວນສັດຕະບຸຣຸດຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ຍ້ອນຄວາມເປັນຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ທຳຄືໂລພະຍ່ອມບໍ່ເຖິງຄວາມໝົດໄປ ທຳຄືໂທສະຍ່ອມບໍ່ເຖິງຄວາມໝົດໄປ ຫຼື ທຳຄືໂມຫະຍ່ອມບໍ່ເຖິງຄວາມໝົດໄປ ແມ່ນຖ້າພິກຂຸບໍ່ເປັນຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ແຕ່ເປັນຜູ້ປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບ ປະພຶດຕາມທຳ ທ່ານກໍເປັນຜູ້ຄວນບູຊາ ຄວນສັນ

ເສີນ ໃນໝູ່ພິກຂຸນັ້ນ" ຍ້ອນຄວາມເປັນຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດນັ້ນ ສັດຕະບຸຣຸດນັ້ນຈຶ່ງເຮັດຂໍ້ປະຕິບັດທີ່ນັ້ນໄວ້ໃນພາຍໃນ ແລ້ວບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງສັດຕະບຸຣຸດ (໑໐)

ອີກປະການໜຶ່ງ ອະສັດຕະບຸຣຸດເປັນຜູ້ຖືການຊົງຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ເຮົາເປັນຜູ້ຖືການຊົງຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ສ່ວນພິກຂຸອື່ນເຫຼົ່ານັ້ນບໍ່ເປັນຜູ້ຖືການຊົງຜ້າບັງສຸກຸນເປັນຂໍ້ວັດປະຕິບັດ" ຍ້ອນຄວາມເປັນຜູ້ຖືການຊົງຜ້າບັງສຸກຸນເປັນຂໍ້ວັດປະຕິບັດນັ້ນ ອະສັດຕະບຸຣຸດນັ້ນຈຶ່ງຍົກຕົນ ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງອະສັດຕະບຸຣຸດ

ສ່ວນສັດຕະບຸຣຸດຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ຍ້ອນຄວາມເປັນຜູ້ຖືການຊົງຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ທຳຄືໂລພະຍ່ອມບໍ່ເຖິງຄວາມໝົດໄປ ທຳຄືໂທສະຍ່ອມບໍ່ເຖິງຄວາມໝົດໄປ ຫຼື ທຳຄືໂມຫະຍ່ອມບໍ່ເຖິງຄວາມໝົດໄປ ແມ່ນຖ້າພິກຂຸບໍ່ເປັນຜູ້ຖືການຊົງຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ແຕ່ເປັນຜູ້ປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບ ປະພຶດຕາມທຳ ທ່ານກໍເປັນຜູ້ຄວນບູຊາ ຄວນສັນເສີນ ໃນໝູ່ພິກຂຸນັ້ນ" ຍ້ອນຄວາມເປັນຜູ້ຖືການຊົງຜ້າບັງສຸກຸນເປັນຂໍ້ວັດປະຕິບັດນັ້ນ ສັດຕະບຸຣຸດນັ້ນຈຶ່ງເຮັດຂໍ້ປະຕິບັດທີ່ນັ້ນໄວ້ໃນພາຍໃນ ແລ້ວບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງສັດຕະບຸຣຸດ (໑໑)

ອີກປະການໜຶ່ງ ອະສັດຕະບຸຣຸດເປັນຜູ້ຖືການທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ເຮົາເປັນຜູ້ຖືການທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ສ່ວນພິກຂຸອື່ນເຫຼົ່ານັ້ນບໍ່ເປັນຜູ້ຖືການທ່ຽວບິນທະບາດເປັນຂໍ້ວັດປະຕິບັດ" ຍ້ອນຄວາມເປັນຜູ້ຖືການທ່ຽວບິນທະບາດເປັນຂໍ້ວັດປະຕິບັດນັ້ນ ອະສັດຕະບຸຣຸດນັ້ນຈຶ່ງຍົກຕົນ ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງອະສັດຕະບຸຣຸດ

ສ່ວນສັດຕະບຸຣຸດຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ຍ້ອນຄວາມເປັນຜູ້ຖືການທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ທຳຄືໂລພະຍ່ອມບໍ່ເຖິງຄວາມໝົດໄປທຳຄືໂທສະຍ່ອມບໍ່ເຖິງຄວາມໝົດໄປຫຼືທຳຄືໂມຫະຍ່ອມບໍ່ເຖິງຄວາມໝົດໄປແມ່ນຖ້າພິກຂຸບໍ່ເປັນຜູ້ຖືການທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ແຕ່ເປັນຜູ້ປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບ ປະພຶດຕາມທຳ ທ່ານກໍເປັນຜູ້ຄວນບູຊາ ຄວນສັນເສີນ ໃນໝູ່ພິກຂຸນັ້ນ" ຍ້ອນຄວາມເປັນຜູ້ຖືການທ່ຽວບິນທະບາດເປັນຂໍ້ວັດປະຕິບັດນັ້ນ ສັດຕະບຸຣຸດນັ້ນຈຶ່ງເຮັດຂໍ້ປະຕິບັດທີ່ນັ້ນໄວ້ໃນພາຍໃນ ແລ້ວບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງສັດຕະບຸຣຸດ (໑໘)

ອີກປະການໜຶ່ງ ອະສັດຕະບຸຣຸດເປັນຜູ້ຖືການຢູ່ເຫງົ້າໄມ້ເປັນຂໍ້ວັດປະຕິບັດ ຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ເຮົາເປັນຜູ້ຖືການຢູ່ເຫງົ້າໄມ້ເປັນຂໍ້ວັດປະຕິບັດ ສ່ວນພິກຂຸອື່ນເຫຼົ່ານັ້ນບໍ່ເປັນຜູ້ຖືການຢູ່ເຫງົ້າໄມ້ເປັນຂໍ້ວັດປະຕິບັດ" ຍ້ອນຄວາມເປັນຜູ້ຖືການຢູ່ເຫງົ້າໄມ້ເປັນຂໍ້ວັດປະຕິບັດນັ້ນ ອະສັດຕະບຸຣຸດນັ້ນ ຈຶ່ງຍົກຕົນ ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງອະສັດຕະບຸຣຸດ

ສ່ວນສັດຕະບຸຣຸດຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ຍ້ອນຄວາມເປັນຜູ້ຖືການຢູ່ເຫງົ້າໄມ້ເປັນຂໍ້ວັດປະຕິບັດ ທຳຄືໂລພະຍ່ອມບໍ່ເຖິງຄວາມໝົດໄປ ທຳຄືໂທສະຍ່ອມບໍ່ເຖິງຄວາມໝົດໄປ ຫຼື ທຳຄືໂມຫະຍ່ອມບໍ່ເຖິງຄວາມໝົດໄປ ແມ່ນຖ້າພິກຂຸບໍ່ເປັນຜູ້ຖືການຢູ່ເຫງົ້າໄມ້ເປັນຂໍ້ວັດປະຕິບັດ ແຕ່ເປັນຜູ້ປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບ ປະພຶດຕາມທຳ ທ່ານກໍເປັນຜູ້ຄວນບູຊາ ຄວນສັນເສີນ ໃນໝູ່ພິກຂຸນັ້ນ" ຍ້ອນຄວາມເປັນຜູ້ຖືການຢູ່ເຫງົ້າໄມ້ເປັນຂໍ້ວັດປະຕິບັດນັ້ນ ສັດຕະບຸຣຸດນັ້ນ ຈຶ່ງເຮັດຂໍ້ປະຕິບັດທໍ່ນັ້ນໄວ້ໃນພາຍໃນ ແລ້ວບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງສັດຕະບຸຣຸດ (໑໙)

ອີກປະການໜຶ່ງ ອະສັດຕະບຸຣຸດເປັນຜູ້ຖືການຢູ່ໃນປ່າຊ້າເປັນຂໍ້ວັດປະຕິບັດ ຯລຯ ເປັນຜູ້ຖືການຢູ່ກາງແຈ້ງເປັນຂໍ້ວັດປະຕິບັດ ຯລຯ ເປັນຜູ້ຖືການນັ່ງເປັນຂໍ້ວັດປະຕິບັດ ຯລຯ ເປັນຜູ້ຖືການຢູ່ໃນເສນາສະນະທີ່ເຂົາຈັດໃຫ້ເປັນຂໍ້ວັດປະຕິບັດ ຯລຯ ເປັນຜູ້ຖືການສັນ ອາສະນະດຽວເປັນຂໍ້ວັດປະຕິບັດ ອະສັດຕະບຸຣຸດນັ້ນຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ເຮົາເປັນຜູ້ຖືການສັນອາສະນະດຽວເປັນຂໍ້ວັດປະຕິບັດ ສ່ວນພິກຂຸອື່ນເຫຼົ່ານັ້ນບໍ່ເປັນຜູ້ຖືການສັນ ອາສະນະດຽວເປັນຂໍ້ວັດປະຕິບັດ" ຍ້ອນຄວາມເປັນຜູ້ຖືການສັນ ອາສະນະດຽວເປັນຂໍ້ວັດປະຕິບັດນັ້ນ ອະສັດຕະບຸຣຸດນັ້ນ ຈຶ່ງຍົກຕົນ ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງອະສັດຕະບຸຣຸດ

ສ່ວນສັດຕະບຸຣຸດຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ຍ້ອນຄວາມເປັນຜູ້ຖືການສັນໃນອາສະນະດຽວເປັນຂໍ້ວັດປະຕິບັດ ທຳຄືໂລພະຍ່ອມບໍ່ເຖິງຄວາມໝົດໄປ ທຳຄືໂທສະຍ່ອມບໍ່ເຖິງຄວາມໝົດໄປ ຫຼື ທຳຄືໂມຫະຍ່ອມບໍ່ເຖິງຄວາມໝົດໄປ ແມ່ນຖ້າພິກຂຸບໍ່ເປັນຜູ້ຖືການສັນໃນອາສະນະດຽວເປັນຂໍ້ວັດປະຕິບັດ ແຕ່ເປັນຜູ້ປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບ ປະພຶດຕາມທຳ ທ່ານກໍເປັນຜູ້ຄວນບູຊາ ຄວນສັນເສີນ ໃນໝູ່ພິກຂຸນັ້ນ" ຍ້ອນຄວາມເປັນຜູ້ຖືການສັນໃນອາສະນະດຽວເປັນຂໍ້ວັດປະຕິບັດນັ້ນ ສັດຕະບຸຣຸດນັ້ນ ຈຶ່ງເຮັດຂໍ້ປະຕິບັດທໍ່ນັ້ນໄວ້ໃນພາຍໃນ ແລ້ວບໍ່

ຍົກຕົນ ບໍ່ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງສັດຕະບຸຣຸດ (໑໔-໑໘)

## ສະມາບັດ ໘ ປະການ

[໑໐໘] ອີກປະການໜຶ່ງ ອະສັດຕະບຸຣຸດສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່ ອະສັດຕະບຸຣຸດນັ້ນຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ເຮົາເປັນຜູ້ໄດ້ປະຖົມຊານສະມາບັດ ສ່ວນພິກຂຸອື່ນເຫຼົ່ານັ້ນບໍ່ເປັນຜູ້ໄດ້ປະຖົມຊານສະມາບັດ" ຍ້ອນປະຖົມຊານສະມາບັດນັ້ນ ອະສັດຕະບຸຣຸດນັ້ນຈຶ່ງຍົກຕົນຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງອະສັດຕະບຸຣຸດ

ສ່ວນສັດຕະບຸຣຸດຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ແມ່ນຍ້ອນປະຖົມຊານສະມາບັດ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດອະຕັມມະຍະຕາ[១]ໄວ້ ຍ້ອນຊົນທັງຫຼາຍເຂົ້າໃຈກັນດ້ວຍເຫດໃດ ໆ ເຫດນັ້ນ ໆ ຍ່ອມເປັນແນວອື່ນຈາກທີ່ເຂົ້າໃຈກັນນັ້ນ" ຍ້ອນປະຖົມຊານສະມາບັດນັ້ນ ສັດຕະບຸຣຸດນັ້ນ ຈຶ່ງເຮັດອະຕັມມະຍະຕາທໍ່ນັ້ນໄວ້ໃນພາຍໃນ ແລ້ວບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງສັດຕະບຸຣຸດ (໑໙)

ອີກປະການໜຶ່ງ ຍ້ອນວິຕົກວິຈານສະງົບລະງັບໄປ ອະສັດຕະບຸຣຸດບັນລຸທຸຕິຍະຊານ

ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸຈະຕຸດຖະຊານ ຯລຯ ຢູ່ ອະສັດຕະບຸຣຸດນັ້ນຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ເຮົາເປັນຜູ້ໄດ້ຈະຕຸດຖະຊານສະມາບັດ ສ່ວນພິກຂຸອື່ນເຫຼົ່ານີ້ ບໍ່ເປັນຜູ້ໄດ້ຈະຕຸດຖະຊານສະມາບັດ" ຍ້ອນຈະຕຸດຖະຊານສະມາບັດນັ້ນ ອະສັດຕະບຸຣຸດນັ້ນຈຶ່ງຍົກຕົນ ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງອະສັດຕະບຸຣຸດ

ສ່ວນສັດຕະບຸຣຸດຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ແມ່ນຍ້ອນຈະຕຸດຖະຊານສະມາບັດ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດອະຕັມມະຍະຕາໄວ້ ຍ້ອນຊົນທັງຫຼາຍເຂົ້າໃຈກັນດ້ວຍເຫດໃດ ໆ ເຫດນັ້ນ ໆ ຍ່ອມເປັນແນວອື່ນຈາກທີ່ເຂົ້າໃຈກັນນັ້ນ" ຍ້ອນຈະຕຸດຖະຊານສະມາບັດນັ້ນ ສັດຕະບຸຣຸດນັ້ນ ຈຶ່ງເຮັດອະຕັມມະຍະຕາທໍ່ນັ້ນໄວ້ໃນພາຍໃນ ແລ້ວບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງສັດຕະບຸຣຸດ (໘໐-໘໘)

ອີກປະການໜຶ່ງ ຍ້ອນລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາ ໂດຍປະການທັງປວງ ອະສັດຕະບຸຣຸດບັນລຸອາກາສານັນຈາຍະຕະນະ ໂດຍກຳນົດວ່າ "ອາກາດຫາບ່ອນສຸດບໍ່ໄດ້" ຢູ່ ທ່ານຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ເຮົາເປັນຜູ້ໄດ້ອາກາສານັນຈາຍະຕະນະສະມາບັດ ສ່ວນພິກຂຸອື່ນເຫຼົ່ານັ້ນ ບໍ່ເປັນຜູ້ໄດ້ອາກາສານັນຈາຍະຕະນະສະມາບັດ" ຍ້ອນອາກາສານັນຈາຍະຕະນະສະມາບັດນັ້ນ ອະສັດຕະບຸຣຸດນັ້ນຈຶ່ງຍົກຕົນ ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງອະສັດຕະບຸຣຸດ

ສ່ວນສັດຕະບຸຣຸດຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ແມ່ນຍ້ອນອາກາສານັນຈາຍະຕະນະສະມາບັດ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດອະຕັມມະຍະຕາໄວ້ ຍ້ອນຊົນທັງຫຼາຍເຂົ້າໃຈກັນດ້ວຍເຫດໃດ ໆ ເຫດນັ້ນ ໆ ຍ່ອມເປັນແນວອື່ນຈາກທີ່ເຂົ້າໃຈກັນນັ້ນ" ຍ້ອນອາກາສານັນຈາຍະຕະນະສະມາບັດນັ້ນ ສັດຕະບຸຣຸດນັ້ນ ຈຶ່ງເຮັດອະຕັມມະຍະຕາທີ່ນັ້ນໄວ້ໃນພາຍໃນ ແລ້ວບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງສັດຕະບຸຣຸດ (໘໙)

ອີກປະການໜຶ່ງ ອະສັດຕະບຸຣຸດລ່ວງອາກາສານັນຈາຍະຕະນະໄດ້ໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະ ໂດຍກຳນົດວ່າ "ວິນຍານຫາບ່ອນສຸດບໍ່ໄດ້" ຢູ່ ທ່ານຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ເຮົາເປັນຜູ້ໄດ້ວິນຍານັນ ຈາຍະຕະນະສະມາບັດ ສ່ວນພິກຂຸອື່ນເຫຼົ່ານັ້ນບໍ່ເປັນຜູ້ໄດ້ວິນຍານັນຈາຍະຕະນະສະມາບັດ" ຍ້ອນວິນຍານັນຈາຍະຕະນະສະມາບັດນັ້ນ ອະສັດຕະບຸຣຸດນັ້ນ ຈຶ່ງຍົກຕົນ ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງອະສັດຕະບຸຣຸດ

ສ່ວນສັດຕະບຸຣຸດຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ແມ່ນຍ້ອນວິນຍານັນຈາຍະຕະນະສະມາບັດ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດອະຕັມມະຍະຕາໄວ້ ຍ້ອນຊົນທັງຫຼາຍເຂົ້າໃຈກັນດ້ວຍເຫດໃດ ໆ ເຫດນັ້ນ ໆ ຍ່ອມເປັນແນວອື່ນຈາກທີ່ເຂົ້າໃຈກັນນັ້ນ" ຍ້ອນວິນຍານັນຈາຍະຕະນະສະມາບັດນັ້ນ ສັດຕະບຸຣຸດນັ້ນຈຶ່ງເຮັດອະຕັມມະຍະຕາທີ່ນັ້ນໄວ້ໃນພາຍໃນ ແລ້ວບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງສັດຕະບຸຣຸດ (໘໔)

ອີກປະການໜຶ່ງ ອະສັດຕະບຸຣຸດກ້າວລ່ວງວິນຍານັນຈາຍະຕະນະໄດ້ໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະ ໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່ ທ່ານຍ່ອມພິຈາລະນາເຫັນ

ດັ່ງນີ້ວ່າ "ເຮົາເປັນຜູ້ໄດ້ອາກິນຈັນຍາຍະຕະນະສະມາບັດ ສ່ວນພິກຂຸອື່ນເຫຼົ່ານັ້ນບໍ່ເປັນຜູ້ໄດ້ອາກິນຈັນຍາຍະຕະນະສະມາບັດ" ຍ້ອນອາກິນຈັນຍາຍະຕະນະສະມາບັດນັ້ນ ອະສັດຕະບຸຣຸດນັ້ນຈຶ່ງຍົກຕົນ ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງອະສັດຕະບຸຣຸດ

ສ່ວນສັດຕະບຸຣຸດຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ແມ່ນຍ້ອນອາກິນຈັນຍາຍະຕະນະສະມາບັດ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດອະຕັມມະຍະຕາໄວ້ ຍ້ອນຊົນທັງຫຼາຍເຂົ້າໃຈກັນດ້ວຍເຫດໃດ ໆ ເຫດນັ້ນ ໆ ຍ່ອມເປັນແນວອື່ນຈາກທີ່ເຂົ້າໃຈກັນນັ້ນ" ຍ້ອນອາກິນຈັນຍາຍະຕະນະສະມາບັດນັ້ນ ສັດຕະບຸຣຸດນັ້ນຈຶ່ງເຮັດອະຕັມມະຍະຕາທີ່ນັ້ນໄວ້ໃນພາຍໃນ ແລ້ວບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງສັດຕະບຸຣຸດ (໘໕)

ອີກປະການໜຶ່ງ ອະສັດຕະບຸຣຸດລ່ວງອາກິນຈັນຍາຍະຕະນະໄດ້ໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຢູ່ ທ່ານຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ເຮົາເປັນຜູ້ໄດ້ເນວະສັນຍານາສັນຍາຍະຕະນະສະມາບັດ ສ່ວນພິກຂຸອື່ນເຫຼົ່ານັ້ນບໍ່ເປັນຜູ້ໄດ້ເນວະສັນຍານາສັນຍາຍະຕະນະສະມາບັດ" ຍ້ອນເນວະສັນຍານາສັນຍາຍະຕະນະສະມາບັດນັ້ນ ອະສັດຕະບຸຣຸດນັ້ນຈຶ່ງຍົກຕົນ ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງອະສັດຕະບຸຣຸດ

ສ່ວນສັດຕະບຸຣຸດຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ແມ່ນຍ້ອນເນວະສັນຍານາສັນຍາຍະຕະນະສະມາບັດ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດອະຕັມມະຍະຕາໄວ້ ຍ້ອນຊົນທັງຫຼາຍເຂົ້າໃຈກັນດ້ວຍເຫດໃດ ໆ ເຫດນັ້ນ ໆ ຍ່ອມເປັນແນວອື່ນຈາກທີ່ເຂົ້າໃຈກັນນັ້ນ" ຍ້ອນເນວະສັນຍານາສັນຍາຍະຕະນະສະມາບັດນັ້ນ ສັດຕະບຸຣຸດນັ້ນຈຶ່ງເຮັດອະຕັມມະຍະຕາທີ່ນັ້ນໄວ້ໃນພາຍໃນ ແລ້ວບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ

ພິກຂຸທັງຫຼາຍ ນີ້ຊື່ວ່າ ທຳຂອງສັດຕະບຸຣຸດ (໘໖)

ອີກປະການໜຶ່ງ ສັດຕະບຸຣຸດລ່ວງເນວະສັນຍານາສັນຍາຍະຕະນະໄດ້ໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດຢູ່ ຍ້ອນເຫັນດ້ວຍປັນຍາ ອາສະວະທັງຫຼາຍຂອງສັດຕະບຸຣຸດນັ້ນຈຶ່ງໝົດໄປ

ພິກຂຸທັງຫຼາຍ ພິກຂຸນີ້ແລ ຍ່ອມບໍ່ຖືໂຕກັບໃຜ ໆ ບໍ່ຖືໂຕໃນຢູ່ໄສ ໆ ແລະບໍ່ຖືໂຕດ້ວຍເຫດໃດ ໆ (໘໗)"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ສັປປຸຣິສະສູດທີ ໑ ຈົບ**

# ໔. ເສວິຕັບພາເສວິຕັບພະສູດ

## ວ່າດ້ວຍທຳທີ່ຄວນເສບແລະທຳທີ່ບໍ່ຄວນເສບ

[໑໐໙] ຂ້າພະເຈົ້າໄດ້ຟັງມາແບວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີທີ່ນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ພິກຂຸທັງຫຼາຍ ເຮົາຈັກສະແດງທຳບັນລະຍາຍທີ່ຄວນເສບ ແລະ ບໍ່ຄວນເສບແກ່ທ່ານທັງຫຼາຍ ທ່ານທັງຫຼາຍ ຈົ່ງຟັງທຳບັນລະຍາຍນັ້ນ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ເມື່ອ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ເຮົາກ່າວກາຍສະມາຈານ (ຄວາມປະພຶດທາງກາຍ) ໄວ້ ໒ ປະການ ຄື

໑. ກາຍສະມາຈານທີ່ຄວນເສບ
໒. ກາຍສະມາຈານທີ່ບໍ່ຄວນເສບ

ກາຍສະມາຈານທັງ ໒ ປະການນັ້ນ ເປັນກາຍສະມາຈານທີ່ກົງກັນຂ້າມກັນແລະກັນ ເຮົາກ່າວວະຈີສະມາຈານ (ຄວາມປະພຶດທາງວາຈາ) ໄວ້ ໒ ປະການ ຄື

໑. ວະຈີສະມາຈານທີ່ຄວນເສບ
໒. ວະຈີສະມາຈານທີ່ບໍ່ຄວນເສບ

ວະຈີສະມາຈານທັງ ໒ ປະການນັ້ນເປັນວະຈີສະມາຈານທີ່ກົງກັນຂ້າມກັນແລະກັນ

ເຮົາກ່າວມະໂນສະມາຈານ (ຄວາມປະພຶດທາງໃຈ) ໄວ້ ໒ ປະການ ຄື

໑. ມະໂນສະມາຈານທີ່ຄວນເສບ
໒. ມະໂນສະມາຈານທີ່ບໍ່ຄວນເສບ

ມະໂນສະມາຈານທັງ ໒ ປະການນັ້ນເປັນມະໂນສະມາຈານທີ່ກົງກັນຂ້າມກັນແລະກັນ

ເຮົາກ່າວຈິດຕຸປະບາດ (ຄວາມເກີດຂຶ້ນແຫ່ງຈິດ) ໄວ້ ໒ ປະການ ຄື

໑. ຈິດຕຸປະບາດທີ່ຄວນເສບ
໒. ຈິດຕຸປະບາດທີ່ບໍ່ຄວນເສບ

ຈິດຕຸປະບາດທັງ ໒ ປະການນັ້ນເປັນຈິດຕຸປະບາດທີ່ກົງກັນຂ້າມກັນແລະກັນ

ເຮົາກ່າວການໄດ້ສັນຍາໄວ້ ໒ ປະການ ຄື

໑. ການໄດ້ສັນຍາທີ່ຄວນເສບ
໒. ການໄດ້ສັນຍາທີ່ບໍ່ຄວນເສບ

ການໄດ້ສັນຍາທັງ ໒ ປະການນັ້ນເປັນການໄດ້ສັນຍາທີ່ກົງກັນຂ້າມກັນແລະກັນ

ເຮົາກ່າວການໄດ້ທິດຖິໄວ້ ໒ ປະການ ຄື

໑. ການໄດ້ທິດຖິທີ່ຄວນເສບ
໒. ການໄດ້ທິດຖິທີ່ບໍ່ຄວນເສບ

ການໄດ້ທິດຖິທັງ ໒ ປະການນັ້ນເປັນການໄດ້ທິດຖິທີ່ກົງກັນຂ້າມກັນແລະກັນ

ເຮົາກ່າວການໄດ້ອັດຕະພາບໄວ້ ໒ ປະການ ຄື

໑. ການໄດ້ອັດຕະພາບທີ່ຄວນເສບ
໒. ການໄດ້ອັດຕະພາບທີ່ບໍ່ຄວນເສບ

ການໄດ້ອັດຕະພາບທັງ ໒ ປະການນັ້ນ ເປັນການໄດ້ອັດຕະພາບທີ່ກົງກັນຂ້າມກັນແລະກັນ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະສາຣີບຸດໄດ້ຂາບທູນພຣະຜູ້ມີພຣະພາກວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຮູ້ເນື້ອຄວາມແຫ່ງທຳບັນລະຍາຍທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຫຍໍ້ ບໍ່ຊົງຊີ້ແຈ່ງເນື້ອຄວາມໃຫ້ພິດສະດານນີ້ ໂດຍພິດສະດານແນວນີ້ ຄື

[໑໑໐] ພຣະຜູ້ມີພຣະພາກເຈົ້າຕັດພຣະດຳຣັດນີ້ໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວກາຍສະມາຈານໄວ້ ໒ ປະການ ຄື

໑. ກາຍສະມາຈານທີ່ຄວນເສບ
໒. ກາຍສະມາຈານທີ່ບໍ່ຄວນເສບ

ກາຍສະມາຈານທັງ ໒ ປະການນັ້ນ ເປັນກາຍສະມາຈານທີ່ກົງກັນຂ້າມກັນແລະກັນ"

ຍ້ອນຊົງອາໄສເຫດອັນໃດ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດໄວ້ເຊັ່ນນັ້ນ

ເມື່ອບຸກຄົນເສບກາຍສະມາຈານເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ກາຍສະມາຈານແບບນີ້ບໍ່ຄວນເສບ ແລະ ເມື່ອບຸກຄົນເສບກາຍສະມາຈານເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ກາຍສະມາຈານແບບນີ້ຄວນເສບ ຂ້ານ້ອຍ

## ກາຍສະມາຈານ ໒ ປະການ

[໑໑໑] ເມື່ອບຸກຄົນເສບກາຍສະມາຈານເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຄື ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ຂ້າສັດ ຄື ເປັນຄົນຫຍາບຊ້າ ມີຝ່າມືເປື້ອນເລືອດ ມັກຂ້າສັດ ບໍ່ມີຄວາມກະລຸນາໃນສັດທັງຫຼາຍ

ເປັນຜູ້ຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ຄື ຖືເອົາຊັບເຄື່ອງພໍໃຈຂອງຜູ້ອື່ນ ທີ່ຢູ່ໃນເຮືອນຫຼືໃນປ່າ ທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ດ້ວຍຄວາມເປັນລັກ ແລະ ເປັນຜູ້ປະພຶດຜິດໃນກາມ ຄື ເປັນຜູ້ລະເມີດປະເພນີໃນຍິງທີ່ຢູ່ໃນປົກຄອງຂອງມານດາ ຍິງທີ່ຢູ່ໃນປົກຄອງຂອງບິດາ ຍິງທີ່ຢູ່ໃນປົກຄອງຂອງມານດາແລະບິດາ ຍິງທີ່ຢູ່ໃນປົກຄອງຂອງອ້າຍນ້ອງຊາຍ ຍິງທີ່ຢູ່ໃນປົກຄອງຂອງເອື້ອຍນ້ອງສາວ ຍິງທີ່ຢູ່ໃນປົກຄອງຂອງຍາດ ຍິງທີ່ຢູ່ໃນປົກຄອງຂອງຕະກູນ ຍິງທີ່ມີທຳຄຸ້ມຄອງ ຍິງທີ່ມີສາມີ ຍິງທີ່ມີສິນບໍ່ຕິດໂຕຢູ່ ໂດຍທີ່ສຸດແມ່ນຍິງທີ່ຊາຍຄ້ອງພວງດອກໄມ້ໝັ້ນໄວ້ ເມື່ອບຸກຄົນເສບກາຍສະມາຈານແບບນີ້ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຂ້ານ້ອຍ

ເມື່ອບຸກຄົນເສບກາຍສະມາຈານເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ຄື ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ລະ ເວັ້ນຂາດຈາກການຂ້າສັດ ວາງທັນດາວຸດແລະສັດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງຫວັງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ ເປັນຜູ້ລະ ເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ຄື ບໍ່ຖືເອົາຊັບເຄື່ອງພໍໃຈຂອງຜູ້ອື່ນ ທີ່ຢູ່ໃນເຮືອນຫຼືໃນປ່າ ທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ດ້ວຍຄວາມເປັນລັກ ເປັນຜູ້ລະເວັ້ນຂາດຈາກການປະພຶດຜິດໃນກາມ ຄືເປັນຜູ້ບໍ່ລະເມີດປະເພນີໃນຍິງທີ່ຢູ່ໃນປົກຄອງຂອງມານດາ ຍິງທີ່ຢູ່ໃນປົກຄອງຂອງບິ

ດາ ຍິງທີ່ຢູ່ໃນປົກຄອງຂອງມານດາແລະບິດາ ຍິງທີ່ຢູ່ໃນປົກຄອງຂອງອ້າຍນ້ອງຊາຍ ຍິງທີ່ຢູ່ໃນປົກຄອງຂອງເອື້ອຍນ້ອງສາວ ຍິງທີ່ຢູ່ໃນປົກຄອງຂອງຍາດ ຍິງທີ່ຢູ່ໃນປົກຄອງຂອງຕະກູນ ຍິງທີ່ມີທຳຄຸ້ມຄອງ ຍິງທີ່ມີສາມີ ຍິງທີ່ມີສິນບໍ່ຕິດໂຕຢູ່ ໂດຍທີ່ສຸດແມ່ນຍິງທີ່ຊາຍຄ້ອງພວງດອກໄມ້ໝັ້ນໄວ້ ເມື່ອບຸກຄົນເສບກາຍສະມາຈານແບບນີ້ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ຂ້ານ້ອຍ

ພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວກາຍສະມາຈານໄວ້ ໒ ປະການ ຄື

໑. ກາຍສະມາຈານທີ່ຄວນເສບ
໒. ກາຍສະມາຈານທີ່ບໍ່ຄວນເສບ

ກາຍສະມາຈານທັງ ໒ ປະການນັ້ນ ເປັນກາຍສະມາຈານທີ່ກົງກັນຂ້າມກັນແລະກັນ" ນັ້ນ ເພຣະອາໄສເຫດນີ້ ພຣະອົງຈຶ່ງຕັດໄວ້

ພຣະຜູ້ມີພຣະພາກເຈົ້າຕັດພຣະດຳຣັດນີ້ໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວວະຈີສະມາຈານໄວ້ ໒ ປະການ ຄື

໑. ວະຈີສະມາຈານທີ່ຄວນເສບ
໒. ວະຈີສະມາຈານທີ່ບໍ່ຄວນເສບ

ວະຈີສະມາຈານທັງ ໒ ປະການນັ້ນເປັນວະຈີສະມາຈານທີ່ກົງກັນຂ້າມກັນແລະກັນ" ຍ້ອນຊິງອາໄສເຫດອັນໃດ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດໄວ້ເຊັ່ນນັ້ນ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອບຸກຄົນເສບວະຈີສະມາຈານເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ວະຈີສະມາຈານແບບນີ້ບໍ່ຄວນເສບ ແລະ ເມື່ອບຸກຄົນເສບວະຈີສະມາຈານເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ວະຈີສະມາຈານແບບນີ້ຄວນເສບ ຂ້ານ້ອຍ

## ວະຈີສະມາຈານ ໒ ປະການ

[໑໑໒] ເມື່ອບຸກຄົນເສບວະຈີສະມາຈານເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຄື ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ເວົ້າຕົວະ ຄື ຢູ່ໃນສະພາ ຢູ່ໃນບໍລິສັດ ຢູ່ທ່າມກາງໝູ່ຍາດ ຢູ່ທ່າມກາງໝູ່ທະຫານ ຫຼືຢູ່ທ່າມກາງລາຊະສຳນັກ ຖືກເຂົາອ້າງເປັນພະຍານ ຊັກຖາມວ່າ "ພໍ່ທ່ານ ເຊີນເທີ້ນ ທ່ານຮູ້ສິ່ງໃດ ຈົ່ງກ່າວສິ່ງນັ້ນ" ບຸກຄົນນັ້ນບໍ່ຮູ້ ກໍເວົ້າວ່າ "ຮູ້" ຫຼື ຮູ້ກໍເວົ້າວ່າ "ບໍ່ຮູ້" ບໍ່ເຫັນກໍເວົ້າວ່າ "ເຫັນ" ຫຼື ເຫັນກໍເວົ້າວ່າ "ບໍ່ເຫັນ" ເຂົາເວົ້າຕົວະທັງທີ່ຮູ້ ຍ້ອນຕົນເປັນ

ເຫດແດ່ ຍ້ອນບຸກຄົນອື່ນເປັນເຫດແດ່ ຍ້ອນເຫດຄືເຫັນແກ່ອາມິດເລັກໜ້ອຍແດ່ ເປັນຜູ້ເວົ້າສັບສໍ່ ຄືຟັງຈາກຂ້າງນີ້ແລ້ວ ໄປບອກຂ້າງນັ້ນເພື່ອທຳລາຍຄົນໝູ່ນີ້ ຫຼື ຟັງຈາກຂ້າງນັ້ນແລ້ວ ມາບອກຂ້າງນີ້ ເພື່ອທຳລາຍຄົນໝູ່ນັ້ນ ຍຸຍົງຄົນທີ່ສາມັກຄີກັນ ສົ່ງເສີມຄົນທີ່ແຕກແຍກກັນ ຊົມຊື່ນຍິນດີເພີດເພີນຕໍ່ຜູ້ທີ່ແຕກແຍກກັນ ເວົ້າແຕ່ຄຳເວົ້າທີ່ກໍ່ຄວາມແຕກແຍກກັນ ເປັນຜູ້ເວົ້າຄຳຫຍາບ ຄື ກ່າວແຕ່ຄຳທີ່ຫຍາບຄາຍ ເຜັດຮ້ອນ ຫຍາບຄາຍ ດຸຮ້າຍແກ່ຜູ້ອື່ນ ກະທົບຜູ້ອື່ນ ໃກ້ຕໍ່ຄວາມໂກດ ບໍ່ເປັນໄປເພື່ອສະມາທິ ເປັນຜູ້ເວົ້າບໍ່ມີສາຣະ ຄື ເວົ້າບໍ່ຖືກເວລາ ເວົ້າຄຳບໍ່ຈິງ ເວົ້າບໍ່ອີງປະໂຫຍດ ເວົ້າບໍ່ອີງທຳ ເວົ້າບໍ່ອີງວິໄນ ເວົ້າຄຳທີ່ບໍ່ມີຫຼັກຖານ ບໍ່ມີທີ່ອ້າງອີງ ບໍ່ມີທີ່ກຳນົດ ບໍ່ປະກອບດ້ວຍປະໂຫຍດ ຕາມການອັນບໍ່ສົມຄວນ ເມື່ອບຸກຄົນເສບວະຈີສະມາຈານແນວນີ້ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຂ້ານ້ອຍ

ເມື່ອບຸກຄົນເສບວະຈີສະມາຈານເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ຄື ບຸກຄົນລາງຄົນໃນໂລກນີ້ ລະການເວົ້າຕົວະ ເວັ້ນຂາດຈາກການເວົ້າຕົວະໄດ້ແລ້ວຄື ຢູ່ໃນສະພາ ຢູ່ໃນບໍລິສັດ ຢູ່ທ່າມກາງໝູ່ຍາດ ຢູ່ທ່າມກາງໝູ່ທະຫານ ຫຼື ຢູ່ທ່າມກາງລາຊະສຳນັກ ຖືກເຂົາອ້າງເປັນພະຍານ ຊັກຖາມວ່າ “ທ່ານ ເຊີນເວົ້າ ທ່ານຮູ້ສິ່ງໃດຈົ່ງເວົ້າສິ່ງນັ້ນ” ບຸກຄົນນັ້ນບໍ່ຮູ້ກໍເວົ້າວ່າ “ບໍ່ຮູ້” ຫຼື ຮູ້ ກໍເວົ້າວ່າ “ຮູ້” ບໍ່ເຫັນກໍເວົ້າວ່າ “ບໍ່ເຫັນ” ຫຼື ເຫັນກໍເວົ້າວ່າ “ເຫັນ” ເຂົາບໍ່ເວົ້າຕົວະທັງທີ່ຮູ້ ຍ້ອນຕົນເປັນເຫດແດ່ ຍ້ອນບຸກຄົນອື່ນເປັນເຫດແດ່ ຍ້ອນເຫດຄືເຫັນແກ່ອາມິດເລັກໜ້ອຍແດ່ ລະການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າສັບສໍ່ໄດ້ແລ້ວ ຟັງຈາກຂ້າງນີ້ແລ້ວ ບໍ່ໄປບອກຂ້າງນັ້ນ ເພື່ອທຳລາຍຄົນໝູ່ນີ້ ຟັງຈາກຂ້າງນັ້ນແລ້ວ ບໍ່ມາບອກຂ້າງນີ້ ເພື່ອທຳລາຍຄົນໝູ່ນັ້ນ ເປັນຜູ້ສະມານຄົນທີ່ແຕກແຍກກັນ ຫຼື ສົ່ງເສີມຄົນທີ່ມີປະໂຫຍດຮ່ວມກັນ ມີຄວາມສາມັກຄີເປັນທີ່ຊົມຊື່ນ ຍິນດີໃນຄວາມສາມັກຄີ ຮື່ນເຣິງໃນສາມັກຄີທຳ ເປັນຜູ້ກ່າວວາຈາກໍ່ໃຫ້ເກີດຄວາມສາມັກຄີ ລະການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າຄຳຫຍາບໄດ້ແລ້ວ ວາຈາໃດຂາດໂທດ ມ່ວນໂສຕະ ໜ້າຮັກ ຈັບໃຈ ເປັນຄຳເວົ້າຂອງຊາວເມືອງ ຄົນສ່ວນໃຫຍ່ພໍໃຈ ຄົນສ່ວນໃຫຍ່ພໍໃຈ ກໍກ່າວວາຈາເຊັ່ນນັ້ນ ລະການເວົ້າບໍ່ມີສາຣະ ເວັ້ນຂາດຈາກການເວົ້າບໍ່ມີສາຣະໄດ້ແລ້ວ ເວົ້າຖືກເວລາ ເວົ້າຈິງ ເວົ້າອີງອັດຖະ ເວົ້າອີງທຳ ເວົ້າອີງວິໄນ ກ່າວວາຈາເປັນຫຼັກຖານ ມີທີ່ອ້າງອີງ ມີຕົ້ນມີປາຍ ປະກອບດ້ວຍປະໂຫຍດຕາມການອັນສົມຄວນ ເມື່ອບຸກຄົນເສບວະຈີສະມາຈານແນວນີ້ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ຂ້ານ້ອຍ

ພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ “ພິກຂຸທັງຫຼາຍ ເຮົາກ່າວວະຈີສະມາຈານໄວ້ ໒ ປະການ ຄື

໑. ວະຈີສະມາຈານທີ່ຄວນເສບ
໒. ວະຈີສະມາຈານທີ່ບໍ່ຄວນເສບ

ວະຈີສະມາຈານທັງ ໒ ປະການນັ້ນ ເປັນວະຈີສະມາຈານທີ່ກົງກັນຂ້າມກັນແລະກັນ" ນັ້ນ ຍ້ອນອາໄສເຫດນີ້ ພຣະອົງຈຶ່ງຕັດໄວ້

ພຣະຜູ້ມີພຣະພາກເຈົ້າຕັດພຣະດຳຣັດນີ້ໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວມະໂນສະມາຈານໄວ້ ໒ ປະການ ຄື

໑. ມະໂນສະມາຈານທີ່ຄວນເສບ
໒. ມະໂນສະມາຈານທີ່ບໍ່ຄວນເສບ

ມະໂນສະມາຈານທັງ ໒ ປະການນັ້ນ ເປັນມະໂນສະມາຈານທີ່ກົງກັນຂ້າມກັນແລະກັນ" ຍ້ອນຊົງອາໄສເຫດອັນໃດ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດໄວ້ເຊັ່ນນັ້ນ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອບຸກຄົນເສບມະໂນສະມາຈານເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ມະໂນສະມາຈານແບບນີ້ບໍ່ຄວນເສບ ແລະ ເມື່ອເສບມະໂນສະມາຈານເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ມະໂນສະມາຈານແບບນີ້ຄວນເສບຂ້ານ້ອຍ

## ມະໂນສະມາຈານ ໒ ປະການ

[໑໑໓] ເມື່ອບຸກຄົນເສບມະໂນສະມາຈານເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຄື ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ເພ່ງເລັງຢາກໄດ້ສິ່ງຂອງຂອງເຂົາ ຄືເພ່ງເລັງຢາກໄດ້ຊັບເຄື່ອງພໍໃຈຂອງຜູ້ອື່ນວ່າ "ເຮັດແນວໃດ ຊັບເຄື່ອງພໍໃຈຂອງຜູ້ອື່ນຈະເພິ່ງເປັນຂອງເຮົາ" ເປັນຜູ້ມີຈິດພະຍາບາດ ຄື ມີຈິດຄິດຮ້າຍວ່າ "ຂໍສັດເຫຼົ່ານີ້ຈົ່ງຖືກຂ້າ ຈົ່ງຖືກທຳລາຍ ຈົ່ງຂາດສູນ ຈົ່ງພິນາດໄປ ຫຼື ຢ່າໄດ້ມີ" ເມື່ອບຸກຄົນເສບມະໂນສະມາຈານແບບນີ້ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຂ້ານ້ອຍ

ເມື່ອບຸກຄົນເສບມະໂນສະມາຈານເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນຄື ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ບໍ່ເພ່ງເລັງຢາກໄດ້ສິ່ງຂອງຂອງເຂົາ ຄື ບໍ່ເພ່ງເລັງຢາກໄດ້ຊັບເຄື່ອງພໍໃຈຂອງຜູ້ອື່ນວ່າ "ເຮັດແນວໃດ ຊັບເຄື່ອງພໍໃຈຂອງຜູ້ອື່ນຈະເພິ່ງເປັນຂອງເຮົາ" ເປັນຜູ້ມີຈິດບໍ່ພະຍາບາດ ຄື ບໍ່ມີຈິດຄິດຮ້າຍວ່າ "ຂໍສັດເຫຼົ່ານີ້ຈົ່ງເປັນຜູ້ບໍ່ມີເວນ ບໍ່ມີຈິດພະຍາບາດ ບໍ່ມີຄວາມທຸກ ມີຄວາມສຸກ ຖືຮັກສາຕົນເທີ້ນ" ເມື່ອບຸກຄົນເສບມະໂນສະມາຈານແບບນີ້ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ຂ້ານ້ອຍ

ພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວມະໂນສະມາຈານໄວ້ ໒ ປະການ ຄື

໑. ມະໂນສະມາຈານທີ່ຄວນເສບ

໒. ມະໂນສະມາຈານທີ່ບໍ່ຄວນເສບ

ມະໂນສະມາຈານທັງ ໒ ປະການນັ້ນ ເປັນມະໂນສະມາຈານທີ່ກົງກັນຂ້າມກັນແລະກັນ" ນັ້ນ ຍ້ອນອາໄສເຫດນີ້ ພຣະອົງຈຶ່ງຕັດໄວ້

## ຈິດຕຸບບາດ ໒ ປະການ

[໑໑໔] ພຣະຜູ້ມີພຣະພາກເຈົ້າຕັດພຣະດຳຣັດນີ້ໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວຈິດຕຸບບາດໄວ້ ໒ ປະການ ຄື

໑. ຈິດຕຸບບາດທີ່ຄວນເສບ

໒. ຈິດຕຸບບາດທີ່ບໍ່ຄວນເສບ

ຈິດຕຸບບາດທັງ ໒ ປະການນັ້ນ ເປັນຈິດຕຸບບາດທີ່ກົງກັນຂ້າມກັນແລະກັນ" ຍ້ອນຊົງອາໄສເຫດອັນໃດ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດໄວ້ເຊັ່ນນັ້ນ

ເມື່ອບຸກຄົນເສບຈິດຕຸບບາດເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຈິດຕຸບບາດແນວນີ້ບໍ່ຄວນເສບ ແລະເມື່ອບຸກຄົນເສບຈິດຕຸບບາດເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ຈິດຕຸບບາດເຊັ່ນນີ້ຄວນເສບ ຂ້ານ້ອຍ

ເມື່ອບຸກຄົນເສບຈິດຕຸບບາດເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຄື ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ເພ່ງເລັງຢາກໄດ້ສິ່ງຂອງຂອງເຂົາ ມີຈິດປະກອບດ້ວຍອະພິດຊາຢູ່ ເປັນຜູ້ປອງຮ້າຍເຂົາ ມີຈິດປະກອບດ້ວຍພະຍາບາດຢູ່ ເປັນຜູ້ມີຄວາມບຽດບຽນ ມີຈິດປະກອບດ້ວຍຄວາມະບຽດບຽນຢູ່ ເມື່ອບຸກຄົນເສບຈິດຕຸບບາດເຊັ່ນນີ້ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຂ້ານ້ອຍ

ເມື່ອບຸກຄົນເສບຈິດຕຸບບາດເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ຄື ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ບໍ່ເພ່ງເລັງຢາກໄດ້ສິ່ງຂອງຂອງເຂົາ ມີຈິດບໍ່ສະຫະຣະຄະຕະດ້ວຍອະພິດຊາຢູ່ ເປັນຜູ້ບໍ່ພະຍາບາດ ມີຈິດປະກອບດ້ວຍຄວາມບໍ່ພະຍາບາດຢູ່ ເປັນຜູ້ບໍ່ບຽດບຽນຢູ່ ມີຈິດປະກອບດ້ວຍຄວາມະບໍ່ບຽດບຽນຢູ່ ເມື່ອບຸກຄົນເສບຈິດຕຸບບາດເຊັ່ນນີ້ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ຂ້ານ້ອຍ

ພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວຈິດຕຸບບາດໄວ້ ໒ ປະການ ຄື

໑. ຈິດຕຸບບາດທີ່ຄວນເສບ
໒. ຈິດຕຸບບາດທີ່ບໍ່ຄວນເສບ

ຈິດຕຸບບາດທັງ ໒ ປະການນັ້ນເປັນຈິດຕຸບບາດທີ່ກົງກັນຂ້າມກັນແລະກັນ" ນັ້ນ ຍ້ອນອາໄສເຫດນີ້ ພຣະອົງຈຶ່ງຕັດໄວ້

## ການໄດ້ສັນຍາ ໒ ປະການ

[໑໑໕] ພຣະຜູ້ມີພຣະພາກເຈົ້າຕັດພຣະດຳຣັດນີ້ໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວການໄດ້ສັນຍາໄວ້ ໒ ປະການ ຄື

໑. ການໄດ້ສັນຍາທີ່ຄວນເສບ
໒. ການໄດ້ສັນຍາທີ່ບໍ່ຄວນເສບ

ການໄດ້ສັນຍາທັງ ໒ ປະການນັ້ນເປັນການໄດ້ສັນຍາທີ່ກົງກັນຂ້າມກັນແລະກັນ" ຍ້ອນຊົງອາໄສເຫດອັນໃດ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດໄວ້ເຊັ່ນນັ້ນ

ເມື່ອບຸກຄົນເສບການໄດ້ສັນຍາເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ການໄດ້ສັນຍາແນວນີ້ບໍ່ຄວນເສບ ແລະເມື່ອບຸກຄົນເສບການໄດ້ສັນຍາ ເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ການໄດ້ສັນຍາແນວນີ້ຄວນເສບ ຂ້ານ້ອຍ

ເມື່ອບຸກຄົນເສບການໄດ້ສັນຍາເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຄືບຸກຄົນລາງຄົນໃນໂລກນີ້ ເປັນຜູ້ຫຼາຍດ້ວຍອະພິດຊາ ມີສັນຍາປະກອບດ້ວຍອະພິດຊາຢູ່ ເປັນຜູ້ພະຍາບາດ ມີສັນຍາປະກອບດ້ວຍພະຍາບາດຢູ່ ເປັນຜູ້ມີຄວາມບຽດບຽນ ມີສັນຍາປະກອບດ້ວຍຄວາມບຽດບຽນຢູ່ ເມື່ອບຸກຄົນເສບການໄດ້ສັນຍາແນວນີ້ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຂ້ານ້ອຍ

ເມື່ອບຸກຄົນເສບການໄດ້ສັນຍາເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ຄືບຸກຄົນລາງຄົນໃນໂລກນີ້ ເປັນຜູ້ບໍ່ຫຼາຍດ້ວຍອະພິດຊາ ມີສັນຍາປະກອບດ້ວຍອະນະພິດຊາຢູ່ ເປັນຜູ້ບໍ່ພະຍາບາດ ມີສັນຍາປະກອບດ້ວຍຄວາມບໍ່ພະຍາບາດຢູ່ ເປັນຜູ້ບໍ່ມີຄວາມບຽດບຽນ ມີສັນຍາປະກອບດ້ວຍຄວາມບໍ່ບຽດບຽນຢູ່ ເມື່ອບຸກຄົນເສບການໄດ້ສັນຍາແນວນີ້ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ຂ້ານ້ອຍ

ພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວການໄດ້ສັນຍາໄວ້ ໒ ປະການ ຄື

໑. ການໄດ້ສັນຍາທີ່ຄວນເສບ
໒. ການໄດ້ສັນຍາທີ່ບໍ່ຄວນເສບ

ການໄດ້ສັນຍາທັງ ໒ ປະການນັ້ນເປັນການໄດ້ສັນຍາທີ່ກົງກັນຂ້າມກັນແລະກັນ" ນັ້ນ ຍ້ອນອາໄສເຫດນີ້ ພຣະອົງຈຶ່ງຕັດໄວ້

## ການໄດ້ທິດຖິ ໒ ປະການ

[໑໑໖] ພຣະຜູ້ມີພຣະພາກເຈົ້າຕັດພຣະດຳຣັດນີ້ໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວການໄດ້ທິດຖິໄວ້ ໒ ປະການ ຄື

໑. ການໄດ້ທິດຖິທີ່ຄວນເສບ
໒. ການໄດ້ທິດຖິທີ່ບໍ່ຄວນເສບ

ການໄດ້ທິດຖິທັງ ໒ ປະການນັ້ນເປັນການໄດ້ທິດຖິທີ່ກົງກັນຂ້າມກັນແລະກັນ" ຍ້ອນຊົງອາໄສເຫດອັນໃດ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດໄວ້ເຊັ່ນນັ້ນ

ເມື່ອບຸກຄົນເສບການໄດ້ທິດຖິເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ການໄດ້ສັນຍາແນວນີ້ບໍ່ຄວນເສບ ແລະເມື່ອບຸກຄົນເສບການໄດ້ທິດຖິເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ການໄດ້ທິດຖິແນວນີ້ຄວນເສບ ຂ້ານ້ອຍ

ເມື່ອບຸກຄົນເສບການໄດ້ທິດຖິເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຄືບຸກຄົນລາງຄົນໃນໂລກນີ້ ເປັນຜູ້ມີຄວາມເຫັນແນວນີ້ວ່າ "ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການເຊ່ນສວງທີ່ເຊ່ນສວງແລ້ວກໍບໍ່ມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີເຮັດຊົ່ວກໍບໍ່ມີ ໂລກນີ້ບໍ່ມີ ໂລກໜ້າບໍ່ມີ ມານດາບໍ່ມີຄຸນ ບິດາບໍ່ມີຄຸນ ສັດທີ່ເປັນໂອປະປາຕິກະ[໑] ກໍບໍ່ມີສະມະນະພາມຜູ້ປະພຶດປະຕິບັດມັກເຮັດໃຫ້ແຈ້ງໂລກນີ້ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງກໍບໍ່ມີໃນໂລກ"[໒] ເມື່ອບຸກຄົນເສບການໄດ້ທິດຖິແນວນີ້ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຂ້ານ້ອຍ

ເມື່ອບຸກຄົນເສບການໄດ້ທິດຖິເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ຄືບຸກຄົນລາງຄົນໃນໂລກນີ້ ເປັນຜູ້ມີຄວາມເຫັນແນວນີ້ວ່າ "ທານທີ່ໃຫ້ແລ້ວມີຜົນ ຍັນທີ່ບູຊາແລ້ວມີຜົນ ການເຊ່ນສວງທີ່ເຊ່ນສວງແລ້ວມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີເຮັດຊົ່ວມີ ໂລກນີ້ມີ ໂລກໜ້າມີ ມານດາມີຄຸນ ບິດາມີຄຸນ ສັດທີ່ເປັນໂອປະປາຕິກະມີຢູ່ ສະມະນະພາມຜູ້ປະພຶດປະ ຕິບັດມັກເຮັດໃຫ້ແຈ້ງໂລກນີ້ ແລະ ໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວ ສອນຜູ້ອື່ນໃຫ້ຮູ້ແຈ້ງກໍມີຢູ່

ໃນໂລກ" ເມື່ອບຸກຄົນເສບການໄດ້ທິດຖິແນວນີ້ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ຂ້ານ້ອຍ

ພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວການໄດ້ທິດຖິໄວ້ ໒ ປະການ ຄື

໑. ການໄດ້ທິດຖິທີ່ຄວນເສບ
໒. ການໄດ້ທິດຖິທີ່ບໍ່ຄວນເສບ

ການໄດ້ທິດຖິທັງ ໒ ປະການນັ້ນ ເປັນການໄດ້ທິດຖິທີ່ກົງກັນຂ້າມກັນແລະກັນ" ນັ້ນ ຍ້ອນອາໄສເຫດນີ້ ພຣະອົງຈຶ່ງຕັດໄວ້

## ການໄດ້ອັດຕະພາບ ໒ ປະການ

[໑໑໗] ພຣະຜູ້ມີພຣະພາກເຈົ້າຕັດພຣະດຳຣັດນີ້ໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວການໄດ້ອັດຕະພາບໄວ້ ໒ ປະການ ຄື

໑. ການໄດ້ອັດຕະພາບທີ່ຄວນເສບ
໒. ການໄດ້ອັດຕະພາບທີ່ບໍ່ຄວນເສບ

ການໄດ້ອັດຕະພາບທັງ ໒ ປະການນັ້ນ ເປັນການໄດ້ອັດຕະພາບທີ່ກົງກັນຂ້າມກັນແລະກັນ" ຍ້ອນຊິງອາໄສເຫດອັນໃດ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດໄວ້ເຊັ່ນນັ້ນ

ເມື່ອບຸກຄົນເສບການໄດ້ອັດຕະພາບເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ການໄດ້ອັດຕະພາບແນວນີ້ບໍ່ຄວນເສບ ແລະ ເມື່ອບຸກຄົນເສບການໄດ້ອັດຕະພາບເຊັ່ນໃດ ອະກຸສົນທຳ ເສື່ອມລົງ ກຸສົນທຳຈະເລີນຂຶ້ນ ການໄດ້ອັດຕະພາບແນວນີ້ຄວນເສບ ຂ້ານ້ອຍ

ເມື່ອບຸກຄົນເສບການໄດ້ອັດຕະພາບເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຄື ເມື່ອບຸກຄົນຍັງການໄດ້ອັດຕະພາບ ອັນມີຄວາມບຽດບຽນໃຫ້ເກີດຂຶ້ນ ຍ້ອນການໄດ້ອັດຕະພາບອັນມີຄວາມບຽດບຽນຍັງບໍ່ສິ້ນສຸດລົງ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຂ້ານ້ອຍ

ເມື່ອບຸກຄົນເສບການໄດ້ອັດຕະພາບເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ຄື ເມື່ອບຸກຄົນຍັງການໄດ້ອັດຕະພາບ ອັນບໍ່ມີຄວາມບຽດບຽນໃຫ້ເກີດຂຶ້ນ ຍ້ອນການໄດ້ອັດຕະພາບອັນບໍ່ມີຄວາມບຽດບຽນສິ້ນສຸດລົງແລ້ວ ອະກຸສົນທຳເສື່ອມລົງ ກຸສົນທຳ ຈະເລີນຂຶ້ນ

ພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວການໄດ້ອັດຕະ

ພາບໄວ້ ໔ ປະການ ຄື

໑. ການໄດ້ອັດຕະພາບທີ່ຄວນເສບ
໔. ການໄດ້ອັດຕະພາບທີ່ບໍ່ຄວນເສບ

ການໄດ້ອັດຕະພາບທັງ ໔ ປະການນັ້ນເປັນການໄດ້ອັດຕະພາບທີ່ກົງກັນຂ້າມກັນແລະກັນ" ນັ້ນ ຍ້ອນອາໄສເຫດນີ້ ພຣະອົງຈຶ່ງຕັດໄວ້

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຮູ້ເນື້ອຄວາມແຫ່ງທຳບັນລະຍາຍທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຫຍໍ້ ບໍ່ຊົງຊີ້ແຈ່ງເນື້ອຄວາມໃຫ້ພິດສະດານນີ້ ໂດຍພິດສະດານແບບນີ້"

[໑໑໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ສາຣີບຸດ ທ່ານຮູ້ເນື້ອຄວາມແຫ່ງທຳບັນລະຍາຍທີ່ເຮົາກ່າວໄວ້ໂດຍຫຍໍ້ ບໍ່ຊີ້ແຈ່ງເນື້ອຄວາມໃຫ້ພິດສະດານນີ້ ໂດຍພິດສະດານໄດ້ແບບນີ້ ຖືກຕ້ອງແລ້ວ

ເຮົາກ່າວຄຳນີ້ໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວກາຍສະມາຈານໄວ້ ໔ ປະການ ຄື

໑. ກາຍສະມາຈານທີ່ຄວນເສບ
໔. ກາຍສະມາຈານທີ່ບໍ່ຄວນເສບ

ກາຍສະມາຈານທັງ ໔ ປະການນັ້ນ ເປັນກາຍສະມາຈານທີ່ກົງກັນຂ້າມກັນແລະກັນ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ເມື່ອບຸກຄົນເສບກາຍສະມາຈານເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ກາຍສະມາຈານແບບນີ້ບໍ່ຄວນເສບ ແລະ ເມື່ອບຸກຄົນເສບກາຍສະມາຈານເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ກາຍສະມາຈານແບບນີ້ຄວນເສບ

ເມື່ອບຸກຄົນເສບກາຍສະມາຈານເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຄືບຸກຄົນລາງຄົນໃນໂລກນີ້ເປັນຜູ້ຂ້າສັດ ຄື ເປັນຄົນຫຍາບຊ້າ ມີຝາມືເປື້ອນເລືອດ ຊອບຂ້າສັດ ບໍ່ມີຄວາມກະລຸນາໃນສັດທັງຫຼາຍ ເປັນຜູ້ຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ຄືຖືເອົາຊັບເຄື່ອງພໍໃຈຂອງຜູ້ອື່ນ ທີ່ຢູ່ໃນເຮືອນຫຼືຢູ່ໃນປ່າ ທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ດ້ວຍຄວາມເປັນລັກ ແລະເປັນຜູ້ປະພຶດຜິດໃນການ ຄື ເປັນຜູ້ລະເມີດປະເພນີໃນຍິງທີ່ຢູ່ໃນປົກຄອງຂອງມານດາ ຍິງທີ່ຢູ່ໃນປົກຄອງຂອງບິດາ ຍິງທີ່ຢູ່ໃນປົກຄອງຂອງມານດາແລະບິດາ ຍິງທີ່ຢູ່ໃນປົກຄອງຂອງອ້າຍນ້ອງຊາຍ ຍິງທີ່ຢູ່ໃນປົກຄອງຂອງເອື້ອຍນ້ອງສາວ ຍິງທີ່ຢູ່ໃນປົກຄອງຂອງຍາດ ຍິງທີ່ຢູ່ໃນປົກຄອງຂອງຕະກູນ ຍິງທີ່ມີທຳຄຸ້ມຄອງ ຍິງທີ່ມີສາມີ ຍິງທີ່ມີສິນບໍ່ຕິດໂຕຢູ່ ໂດຍທີ່ສຸດແມ່ນຍິງທີ່ຊາຍຄ້ອງພວງດອກໄມ້ໝັ້ນໄວ້ ເມື່ອບຸກຄົນເສບກາຍສະມາຈານແບບນີ້ ອະກຸສົນທຳຈະເລີນຂຶ້ນ

ກຸສົນທຳເສື່ອມລົງ

ເມື່ອບຸກຄົນເສບກາຍສະມາຈານເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ຄື ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ລະ ເວັ້ນຂາດຈາກການຂ້າສັດ ວາງທັນດາວຸດແລະສັດຕາວຸດແລ້ວ ມີຄວາມລະອາຍ ມີຄວາມອີດູ ມຸ້ງຫວັງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ ເປັນຜູ້ລະເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ຄື ບໍ່ຖືເອົາຊັບເຄື່ອງພໍໃຈຂອງຜູ້ອື່ນ ທີ່ຢູ່ໃນເຮືອນຫຼືໃນປ່າ ທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ດ້ວຍຄວາມເປັນລັກ ເປັນຜູ້ລະເວັ້ນຂາດຈາກການປະພຶດຜິດໃນກາມ ຄືເປັນຜູ້ບໍ່ລະເມີດປະເພນີໃນຍິງທີ່ຢູ່ໃນປົກຄອງຂອງມານດາ ຍິງທີ່ຢູ່ໃນປົກຄອງຂອງບິດາ ຍິງທີ່ຢູ່ໃນປົກຄອງຂອງມານດາແລະບິດາ ຍິງທີ່ຢູ່ໃນປົກຄອງຂອງອ້າຍນ້ອງຊາຍ ຍິງທີ່ຢູ່ໃນປົກຄອງຂອງເອື້ອຍນ້ອງສາວ ຍິງທີ່ຢູ່ໃນປົກຄອງຂອງຍາດ ຍິງທີ່ຢູ່ໃນປົກຄອງຂອງຕະກູນ ຍິງທີ່ມີທຳຄຸ້ມຄອງ ຍິງທີ່ມີສາມີ ຍິງທີ່ມີສິນບໍ່ຕິດໂຕຢູ່ ໂດຍທີ່ສຸດແມ່ນຍິງທີ່ຊາຍຄ້ອງພວງດອກໄມ້ໝັ້ນໄວ້

ສາຣີບຸດ ເມື່ອບຸກຄົນເສບກາຍສະມາຈານແນວນີ້ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ເຮົາກ່າວຄຳນີ້ໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວກາຍສະມາຈານໄວ້ ໒ ປະການ ຄື

໑. ກາຍສະມາຈານທີ່ຄວນເສບ
໒. ກາຍສະມາຈານທີ່ບໍ່ຄວນເສບ

ກາຍສະມາຈານທັງ ໒ ປະການນັ້ນ ເປັນກາຍສະມາຈານທີ່ກົງກັນຂ້າມກັນແລະກັນ" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

ເຮົາກ່າວຄຳນີ້ໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວ ວະຈີສະມາຈານໄວ້ ໒ ປະການ ฯລฯ
ເຮົາກ່າວ ມະໂນສະມາຈານໄວ້ ໒ ປະການ ฯລฯ
ເຮົາກ່າວ ຈິດຕຸປະບາດໄວ້ ໒ ປະການ ฯລฯ
ເຮົາກ່າວການໄດ້ ສັນຍາໄວ້ ໒ ປະການ ฯລฯ
ເຮົາກ່າວການໄດ້ ທິດຖິໄວ້ ໒ ປະການ ฯລฯ

ເຮົາກ່າວຄຳນີ້ໄວ້ວ່າ "ພິກຂຸທັງຫຼາຍ ເຮົາກ່າວການໄດ້ອັດຕະພາບໄວ້ ໒ ປະການ ຄື

໑. ການໄດ້ອັດຕະພາບທີ່ຄວນເສບ
໒. ການໄດ້ອັດຕະພາບທີ່ບໍ່ຄວນເສບ

ການໄດ້ອັດຕະພາບທັງ ໒ ປະການນັ້ນ ເປັນການໄດ້ອັດຕະພາບທີ່ກົງກັນຂ້າມກັນແລະກັນ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ເມື່ອບຸກຄົນເສບການໄດ້ອັດຕະພາບເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ການໄດ້ອັດຕະພາບແນວນີ້ບໍ່ຄວນເສບ ແລະ ເມື່ອບຸກຄົນເສບການໄດ້ອັດຕະພາບເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ການໄດ້ອັດຕະພາບແນວນີ້ຄວນເສບ

ເມື່ອບຸກຄົນເສບການໄດ້ອັດຕະພາບເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຄື ເມື່ອບຸກຄົນຍັງການໄດ້ອັດຕະພາບທີ່ມີຄວາມບຽດບຽນໃຫ້ເກີດຂຶ້ນ ຍ້ອນການໄດ້ອັດຕະພາບທີ່ມີຄວາມບຽດບຽນຍັງບໍ່ສິ້ນສຸດລົງ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ

ເມື່ອບຸກຄົນເສບການໄດ້ອັດຕະພາບເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ຄື ເມື່ອບຸກຄົນຍັງການໄດ້ອັດຕະພາບທີ່ບໍ່ມີຄວາມບຽດບຽນໃຫ້ເກີດຂຶ້ນ ຍ້ອນການໄດ້ອັດຕະພາບທີ່ບໍ່ມີຄວາມບຽດບຽນສິ້ນສຸດລົງແລ້ວ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ

ເຮົາກ່າວຄຳນີ້ໄວ້ວ່າ “ພິກຂຸທັງຫຼາຍ ເຮົາກ່າວການໄດ້ອັດຕະພາບໄວ້ ໒ ປະການ ຄື

໑. ການໄດ້ອັດຕະພາບທີ່ຄວນເສບ
໒. ການໄດ້ອັດຕະພາບທີ່ບໍ່ຄວນເສບ

ການໄດ້ອັດຕະພາບທັງ ໒ ປະການນັ້ນ ເປັນການໄດ້ອັດຕະພາບທີ່ກົງກັນຂ້າມກັນແລະກັນ” ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

ສາຣີບຸດ ທ່ານເພິ່ງເຫັນເນື້ອຄວາມແຫ່ງທຳບັນລະຍາຍທີ່ເຮົາກ່າວໄວ້ໂດຍຫຍໍ້ ບໍ່ຊີ້ແຈ່ງເນື້ອຄວາມໃຫ້ພິດສະດານນີ້ ໂດຍພິດສະດານແນວນີ້

## ອາຍະຕະນະ ໑໘ ປະການ

[໑໑໗] ສາຣີບຸດ ເຮົາກ່າວຮູບທີ່ເພິ່ງຮູ້ແຈ້ງທາງຕາໄວ້ ໒ ປະການ ຄື

໑. ຮູບທີ່ຄວນເສບ
໒. ຮູບທີ່ບໍ່ຄວນເສບ

ເຮົາກ່າວສຽງທີ່ເພິ່ງຮູ້ແຈ້ງທາງຫູໄວ້ ໒ ປະການ ຄື

໑. ສຽງທີ່ຄວນເສບ
໒. ສຽງທີ່ບໍ່ຄວນເສບ

ເຮົາກ່າວກິ່ນທີ່ເພິ່ງຮູ້ແຈ້ງທາງດັງໄວ້ ໒ ປະການ ຄື

໑. ກິ່ນທີ່ຄວນເສບ
໒. ກິ່ນທີ່ບໍ່ຄວນເສບ

ເຮົາກ່າວຣົດທີ່ເພິ່ງຮູ້ແຈ້ງທາງລີ້ນໄວ້ ໒ ປະການ ຄື

໑. ຣົດທີ່ຄວນເສບ
໒. ຣົດທີ່ບໍ່ຄວນເສບ

ເຮົາກ່າວໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍໄວ້ ໒ ປະການ ຄື

໑. ໂຜດຖັບພະທີ່ຄວນເສບ
໒. ໂຜດຖັບພະທີ່ບໍ່ຄວນເສບ

ເຮົາກ່າວທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈໄວ້ ໒ ປະການ ຄື

໑. ທຳມາຣົມທີ່ຄວນເສບ
໒. ທຳມາຣົມທີ່ບໍ່ຄວນເສບ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະສາຣີບຸດໄດ້ຂາບທູນພຣະຜູ້ມີພຣະພາກວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງຮູ້ເນື້ອຄວາມແຫ່ງທຳບັນລະຍາຍນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຫຍໍ້ ບໍ່ຊົງຊີ້ແຈ່ງເນື້ອຄວາມໄວ້ໂດຍພິດສະດານ ໂດຍພິດສະດານແນວນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຕັດພຣະດຳຣັດນີ້ໄວ້ວ່າ "ສາຣີບຸດ ເຮົາກ່າວຮູບທີ່ເພິ່ງຮູ້ແຈ້ງທາງຕາໄວ້ ໒ ປະການ ຄື

໑. ຮູບທີ່ຄວນເສບ
໒. ຮູບທີ່ບໍ່ຄວນເສບ"

ຍ້ອນຊົງອາໄສເຫດອັນໃດ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດໄວ້ເຊັ່ນນັ້ນ ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອບຸກຄົນເສບຮູບທີ່ເພິ່ງຮູ້ແຈ້ງທາງຕາເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຮູບທີ່ເພິ່ງຮູ້ແຈ້ງທາງຕາແນວນີ້ບໍ່ຄວນເສບ ແລະ ເມື່ອບຸກຄົນເສບຮູບທີ່ເພິ່ງຮູ້ແຈ້ງທາງຕາເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ຮູບທີ່ເພິ່ງຮູ້ແຈ້ງທາງຕາແນວນີ້ຄວນເສບ

ພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ສາຣີບຸດ ເຮົາກ່າວຮູບທີ່ເພິ່ງຮູ້ແຈ້ງທາງຕາໄວ້ ໒ ປະການ ຄື

໑. ຮູບທີ່ຄວນເສບ

໒. ຮູບທີ່ບໍ່ຄວນເສບ"

ຍ້ອນອາໄສເຫດນີ້ ຂ້າພຣະອົງຈຶ່ງກ່າວໄວ້

ພຣະຜູ້ມີພຣະພາກເຈົ້າຕັດພຣະດຳຣັດນີ້ໄວ້ວ່າ "ສາຣີບຸດ ເຮົາກ່າວສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ

ສຽງທີ່ເພິ່ງຮູ້ແຈ້ງທາງຫູແບບນີ້ບໍ່ຄວນເສບ ຯລຯ ສຽງທີ່ເພິ່ງຮູ້ແຈ້ງທາງຫູແບບນີ້ ຄວນເສບ ຯລຯ

ກິ່ນທີ່ເພິ່ງຮູ້ແຈ້ງທາງດັງແບບນີ້ບໍ່ຄວນເສບ ຯລຯ ກິ່ນທີ່ເພິ່ງຮູ້ແຈ້ງທາງດັງແບບນີ້ ຄວນເສບ ຯລຯ

ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນແບບນີ້ບໍ່ຄວນເສບ ຯລຯ ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນແບບນີ້ ຄວນເສບ ຯລຯ

ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍແບບນີ້ບໍ່ຄວນເສບ ຯລຯ ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍແບບນີ້ຄວນເສບ ຯລຯ

ພຣະຜູ້ມີພຣະພາກເຈົ້າຕັດພຣະດຳຣັດນີ້ໄວ້ວ່າ "ສາຣີບຸດ ເຮົາກ່າວທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈໄວ້ ໒ ປະການ ຄື

໑. ທຳມາຣົມທີ່ຄວນເສບ
໒. ທຳມາຣົມທີ່ບໍ່ຄວນເສບ"

ຍ້ອນຊິງອາໄສເຫດອັນໃດ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດໄວ້ເຊັ່ນນັ້ນ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອບຸກຄົນເສບທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈແບບນີ້ບໍ່ຄວນເສບ ແລະເມື່ອບຸກຄົນເສບທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈແບບນີ້ຄວນເສບ

ພຣະດຳຣັດທີ່ພຣະຜູ້ມີພຣະພາຕັດໄວ້ວ່າ "ສາຣີບຸດ ເຮົາກ່າວທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈໄວ້ ໒ ປະການຄື

໑. ທຳມາຣົມທີ່ຄວນເສບ
໒. ທຳມາຣົມທີ່ບໍ່ຄວນເສບ"

ນັ້ນ ຍ້ອນອາໄສເຫດນີ້ ພຣະອົງຈຶ່ງຕັດໄວ້

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຮູ້ເນື້ອຄວາມແຫ່ງທຳບັນລະຍາຍນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຫຍໍ້ ບໍ່ຊົງຊີ້ແຈ່ງເນື້ອຄວາມໃຫ້ພິດສະດານ ໂດຍພິດສະດານແບບນີ້

[໑໘໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ສາຣີບຸດ ທ່ານຮູ້ເນື້ອຄວາມແຫ່ງທຳບັນລະຍາຍທີ່ເຮົາກ່າວໄວ້ໂດຍຫຍໍ້ ບໍ່ຊີ້ແຈ່ງເນື້ອຄວາມໃຫ້ພິດສະດານນີ້ ໂດຍພິດສະດານແບບນີ້ວ່າ "ເຮົາກ່າວໄວ້ແລ້ວແບບນີ້ວ່າ "ສາຣີບຸດ ເຮົາກ່າວຮູບທີ່ເພິ່ງຮູ້ແຈ້ງທາງຕາໄວ້ ໘ ປະການ ຄື

໑. ຮູບທີ່ຄວນເສບ
໘. ຮູບທີ່ບໍ່ຄວນເສບ"

ຍ້ອນອາໄສເຫດອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ສາຣີບຸດ ເມື່ອບຸກຄົນເສບຮູບທີ່ເພິ່ງຮູ້ແຈ້ງທາງຕາເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຮູບທີ່ເພິ່ງຮູ້ແຈ້ງທາງຕາແບບນີ້ບໍ່ຄວນເສບ ແລະ ເມື່ອບຸກຄົນເສບຮູບທີ່ເພິ່ງຮູ້ແຈ້ງທາງຕາເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ຮູບທີ່ເພິ່ງຮູ້ແຈ້ງທາງຕາແບບນີ້ຄວນເສບ ເຮົາກ່າວຄຳນີ້ໄວ້ວ່າ "ສາຣີບຸດ ເຮົາກ່າວຮູບທີ່ເພິ່ງຮູ້ແຈ້ງທາງຕາໄວ້ ໘ ປະການ ຄື

໑. ຮູບທີ່ຄວນເສບ
໘. ຮູບທີ່ບໍ່ຄວນເສບ"

ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

ຯລຯ ສຽງທີ່ເພິ່ງຮູ້ແຈ້ງທາງຫູແບບນີ້ບໍ່ຄວນເສບ ຯລຯ ສຽງທີ່ເພິ່ງຮູ້ແຈ້ງທາງຫູແບບນີ້ຄວນເສບ ຯລຯ

ຯລຯ ກິ່ນທີ່ເພິ່ງຮູ້ແຈ້ງທາງດັງແບບນີ້ບໍ່ຄວນເສບ ຯລຯ ກິ່ນທີ່ເພິ່ງຮູ້ແຈ້ງທາງດັງແບບນີ້ຄວນເສບ ຯລຯ

ຯລຯ ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນແບບນີ້ບໍ່ຄວນເສບ ຯລຯ ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນແບບນີ້ຄວນ ເສບ ຯລຯ

ຯລຯ ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍແບບນີ້ບໍ່ຄວນເສບ ຯລຯ ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍແບບນີ້ຄວນເສບ ຯລຯ

ເຮົາກ່າວຄຳນີ້ໄວ້ວ່າ "ສາຣີບຸດ ເຮົາກ່າວທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈໄວ້ ໘ ປະການ ຄື

໑. ທຳມາຣົມທີ່ຄວນເສບ

໒. ທຳມາຣົມທີ່ບໍ່ຄວນເສບ"

ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ສາຣີບຸດ ເມື່ອບຸກຄົນເສບທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈແບບນີ້ບໍ່ຄວນເສບ ແລະ ເມື່ອບຸກຄົນເສບທຳມາຣົມ ທີ່ເພິ່ງຮູ້ແຈ້ງທາງໃຈເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈແບບນີ້ຄວນເສບ

ເຮົາກ່າວຄຳນີ້ໄວ້ວ່າ "ສາຣີບຸດ ເຮົາກ່າວທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈໄວ້ ໒ ປະການ ຄື

໑. ທຳມາຣົມທີ່ຄວນເສບ
໒. ທຳມາຣົມທີ່ບໍ່ຄວນເສບ"

ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

ສາຣີບຸດ ທ່ານເພິ່ງເຫັນເນື້ອຄວາມແຫ່ງທຳບັນລະຍາຍທີ່ເຮົາກ່າວໄວ້ໂດຍຫຍໍ້ນີ້ ໂດຍພິດສະດານແບບນີ້

[໑໘໑] ສາຣີບຸດ ເຮົາກ່າວຈີວອນໄວ້ ໒ ຊະນິດ ຄື

໑. ຈີວອນທີ່ຄວນເສບ
໒. ຈີວອນທີ່ບໍ່ຄວນເສບ ຯລຯ

ເຮົາກ່າວບິນທະບາດໄວ້ ໒ ຊະນິດ ຄື

໑. ບິນທະບາດທີ່ຄວນເສບ
໒. ບິນທະບາດທີ່ບໍ່ຄວນເສບ ຯລຯ

ເຮົາກ່າວເສນາສະນະໄວ້ ໒ ຊະນິດ ຄື

໑. ເສນາສະນະທີ່ຄວນເສບ
໒. ເສນາສະນະທີ່ບໍ່ຄວນເສບ ຯລຯ

ເຮົາກ່າວໝູ່ບ້ານໄວ້ ໒ ຊະນິດ ຄື

໑. ໝູ່ບ້ານທີ່ຄວນເສບ

໒. ໝູ່ບ້ານທີ່ບໍ່ຄວນເສບ ຯລຯ

ເຮົາກ່າວນິຄົມໄວ້ ໒ ຊະນິດ ຄື

໑. ນິຄົມທີ່ຄວນເສບ
໒. ນິຄົມທີ່ບໍ່ຄວນເສບ ຯລຯ

ເຮົາກ່າວນະຄອນໄວ້ ໒ ຊະນິດ ຄື

໑. ນະຄອນທີ່ຄວນເສບ
໒. ນະຄອນທີ່ບໍ່ຄວນເສບ ຯລຯ

ເຮົາກ່າວຊົນນະບົດໄວ້ ໒ ຊະນິດ ຄື

໑. ຊົນນະບົດທີ່ຄວນເສບ
໒. ຊົນນະບົດທີ່ບໍ່ຄວນເສບ ຯລຯ

ເຮົາກ່າວບຸກຄົນໄວ້ ໒ ຈຳພວກ ຄື

໑. ບຸກຄົນທີ່ຄວນເສບ
໒. ບຸກຄົນທີ່ບໍ່ຄວນເສບ ຯລຯ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະສາຣີບຸດໄດ້ຂາບທູນພຣະຜູ້ມີພຣະພາກວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຮູ້ເນື້ອຄວາມແຫ່ງທຳບັນລະຍາຍນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຫຍໍ້ ບໍ່ຊົງຊີ້ແຈ່ງເນື້ອຄວາມໃຫ້ພິດສະດານ ໂດຍພິດສະດານແນວນີ້

ພຣະຜູ້ມີພຣະພາກເຈົ້າຕັດພຣະດຳຣັດນີ້ໄວ້ວ່າ "ສາຣີບຸດ ເຮົາກ່າວຈີວອນໄວ້ ໒ ຊະນິດ ຄື

໑. ຈີວອນທີ່ຄວນເສບ
໒. ຈີວອນທີ່ບໍ່ຄວນເສບ"

ຍ້ອນຊົງອາໄສເຫດອັນໃດ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດໄວ້ເຊັ່ນນັ້ນ

ຂ້າແດ່ພຣະອົງຜູ້ຈະເລີນ ເມື່ອພິກຂຸເສບຈີວອນເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຈີວອນແນວນີ້ບໍ່ຄວນເສບ ແລະເມື່ອພິກຂຸເສບຈີວອນເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ຈີວອນແນວນີ້ຄວນເສບ

ພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ສາຣີບຸດ ເຮົາກ່າວຈີວອນໄວ້ ໒ ຊະນິດ ຄື

໑. ຈີວອນທີ່ຄວນເສບ
໒. ຈີວອນທີ່ບໍ່ຄວນເສບ"

ນັ້ນ ຍ້ອນອາໄສເຫດນີ້ ພຣະອົງຈຶ່ງຕັດໄວ້

ฯລฯ ບິນທະບາດແບບນີ້ບໍ່ຄວນເສບ ฯລฯ ບິນທະບາດແບບນີ້ຄວນເສບ ฯລฯ
ฯລฯ ເສນາສະນະແບບນີ້ບໍ່ຄວນເສບ ฯລฯ ເສນາສະນະແບບນີ້ຄວນເສບ ฯລฯ
ฯລฯ ໝູ່ບ້ານແບບນີ້ບໍ່ຄວນເສບ ฯລฯ ໝູ່ບ້ານແບບນີ້ຄວນເສບ ฯລฯ
ฯລฯ ນິຄົມແບບນີ້ບໍ່ຄວນເສບ ฯລฯ ນິຄົມແບບນີ້ຄວນເສບ ฯລฯ
ฯລฯ ນະຄອນແບບນີ້ບໍ່ຄວນເສບ ฯລฯ ນະຄອນແບບນີ້ຄວນເສບ ฯລฯ
ฯລฯ ຊົນນະບົດແບບນີ້ບໍ່ຄວນເສບ ฯລฯ ຊົນນະບົດແບບນີ້ຄວນເສບ ฯລฯ

ພຣະຜູ້ມີພຣະພາກເຈົ້າຕັດພຣະດຳຣັດນີ້ໄວ້ວ່າ "ສາຣີບຸດ ເຮົາກ່າວບຸກຄົນໄວ້ ໒ ຈຳພວກ ຄື

໑. ບຸກຄົນທີ່ຄວນເສບ
໒. ບຸກຄົນທີ່ບໍ່ຄວນເສບ"

ນັ້ນ ຍ້ອນຊົງອາໄສເຫດອັນໃດ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດໄວ້ເຊັ່ນນັ້ນ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອບຸກຄົນເສບບຸກຄົນເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນກຸສົນທຳເສື່ອມລົງ ບຸກຄົນແບບນີ້ບໍ່ຄວນເສບ ແລະ ເມື່ອເສບບຸກຄົນເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ບຸກຄົນແບບນີ້ຄວນເສບ

ພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ສາຣີບຸດ ເຮົາກ່າວບຸກຄົນໄວ້ ໒ ຈຳພວກ ຄື

໑. ບຸກຄົນທີ່ຄວນເສບ
໒. ບຸກຄົນທີ່ບໍ່ຄວນເສບ"

ນັ້ນ ຍ້ອນອາໄສເຫດນີ້ ພຣະອົງຈຶ່ງຕັດໄວ້

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຮູ້ເນື້ອຄວາມແຫ່ງທຳບັນລະຍາຍນີ້ທີ່ພຣະຜູ້ມີພຣະພາກຕັດໄວ້ໂດຍຫຍໍ້ ບໍ່ຊົງຊີ້ແຈງເນື້ອຄວາມໃຫ້ພິດສະດານ ໂດຍພິດສະດານແບບນີ້

[໑໘໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ສາຣີບຸດ ທ່ານຮູ້ເນື້ອຄວາມແຫ່ງທຳບັນລະຍາຍທີ່ເຮົາກ່າວໂດຍຫຍໍ້ ບໍ່ຊີ້ແຈ່ງເນື້ອຄວາມໃຫ້ພິດສະດານນີ້ ໂດຍພິດສະດານແນວນີ້ ຖືກຕ້ອງແລ້ວ

ເຮົາກ່າວຄຳນີ້ໄວ້ວ່າ "ສາຣີບຸດ ເຮົາກ່າວຈີວອນໄວ້ ໒ ຊະນິດ ຄື

໑. ຈີວອນທີ່ຄວນເສບ
໒. ຈີວອນທີ່ບໍ່ຄວນເສບ"

ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ສາຣີບຸດ ເມື່ອພິກຂຸເສບຈີວອນເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ ຈີວອນແນວນີ້ບໍ່ຄວນເສບ ແລະ ເມື່ອພິກຂຸເສບຈີວອນເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ຈີວອນແນວນີ້ຄວນເສບ

ເຮົາກ່າວຄຳນີ້ໄວ້ວ່າ "ສາຣີບຸດ ເຮົາກ່າວຈີວອນໄວ້ ໒ ຊະນິດ ຄື

໑. ຈີວອນທີ່ຄວນເສບ
໒. ຈີວອນທີ່ບໍ່ຄວນເສບ"

ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

ฯລฯ ບິນທະບາດແນວນີ້ບໍ່ຄວນເສບ ฯລฯ ບິນທະບາດແນວນີ້ຄວນເສບ ฯລฯ
ฯລฯ ເສນາສະນະແນວນີ້ບໍ່ຄວນເສບ ฯລฯ ເສນາສະນະແນວນີ້ຄວນເສບ ฯລฯ
ฯລฯ ໝູ່ບ້ານແນວນີ້ບໍ່ຄວນເສບ ฯລฯ ໝູ່ບ້ານແນວນີ້ຄວນເສບ ฯລฯ
ฯລฯ ນິຄົມແນວນີ້ບໍ່ຄວນເສບ ฯລฯ ນິຄົມແນວນີ້ຄວນເສບ ฯລฯ
ฯລฯ ຊົນນະບົດແນວນີ້ບໍ່ຄວນເສບ ฯລฯ ຊົນນະບົດແນວນີ້ຄວນເສບ ฯລฯ

ເຮົາກ່າວຄຳນີ້ໄວ້ວ່າ "ສາຣີບຸດ ເຮົາກ່າວບຸກຄົນໄວ້ ໒ ຈຳພວກ ຄື

໑. ບຸກຄົນທີ່ຄວນເສບ
໒. ບຸກຄົນທີ່ບໍ່ຄວນເສບ"

ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ສາຣີບຸດ ເມື່ອບຸກຄົນເສບບຸກຄົນເຊັ່ນໃດ ອະກຸສົນທຳຈະເລີນຂຶ້ນ ກຸສົນທຳເສື່ອມລົງ

ບຸກຄົນແບບນີ້ບໍ່ຄວນເສບ ແລະເມື່ອບຸກຄົນເສບບຸກຄົນເຊັ່ນໃດ ອະກຸສົນທຳເສື່ອມລົງ ກຸສົນທຳຈະເລີນຂຶ້ນ ບຸກຄົນແບບນີ້ຄວນເສບ

ເຮົາກ່າວຄຳນີ້ໄວ້ວ່າ "ສາຣີບຸດ ເຮົາກ່າວບຸກຄົນໄວ້ ໒ ຈຳພວກ ຄື

໑. ບຸກຄົນທີ່ຄວນເສບ
໒. ບຸກຄົນທີ່ບໍ່ຄວນເສບ"

ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

ສາຣີບຸດ ທ່ານເພິ່ງເຫັນເນື້ອຄວາມແຫ່ງທຳບັນລະຍາຍທີ່ເຮົາກ່າວແລ້ວໂດຍຫຍໍ້ນີ້ ໂດຍພິດສະດານແບບນີ້

[໑໒໓] ສາຣີບຸດ ແມ່ນຖ້າກະສັດທັງປວງເພິ່ງຮູ້ທົ່ວເຖິງອັດຖະແຫ່ງທຳບັນລະຍາຍ ທີ່ເຮົາກ່າວໂດຍຫຍໍ້ນີ້ ໄດ້ໂດຍພິດສະດານແບບນີ້ ຄວາມຮູ້ນັ້ນເພິ່ງເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກແກ່ກະສັດແມ່ນທັງປວງຕະຫຼອດການລະນານ

ແມ່ນຖ້າພາມທັງປວງ ຯລຯ
ແມ່ນຖ້າແພດທັງປວງ ຯລຯ

ແມ່ນຖ້າສູດທັງປວງເພິ່ງຮູ້ທົ່ວເຖິງອັດຖະແຫ່ງທຳບັນລະຍາຍທີ່ເຮົາກ່າວໂດຍຫຍໍ້ນີ້ໄດ້ໂດຍພິດສະດານແບບນີ້ ຄວາມຮູ້ນັ້ນເພິ່ງເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກແກ່ສູດທັງປວງຕະຫຼອດການລະນານ

ສາຣີບຸດ ແມ່ນຖ້າໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໝູ່ສັດພ້ອມທັງສະມະນະພາມຕະຫຼອດທັງເທວະດາແລະມະນຸດ ເພິ່ງຮູ້ທົ່ວເຖິງອັດຖະແຫ່ງທຳບັນລະຍາຍທີ່ເຮົາກ່າວໂດຍຫຍໍ້ນີ້ ໄດ້ໂດຍພິດສະດານແບບນີ້ ຄວາມຮູ້ນັ້ນເພິ່ງເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກແກ່ໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໝູ່ສັດພ້ອມທັງສະມະນະພາມຕະຫຼອດທັງເທວະດາ ແລະ ມະນຸດຕະຫຼອດການລະນານ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະສາຣີບຸດມີໃຈຍິນດີ ຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ເສວິຕັບພາເສວິຕັບພະສູດທີ ໒ ຈົບ**

# ៥. ພະຫຸທາຕຸກະສູດ

## ວ່າດ້ວຍທາດຫຼາຍຢ່າງ

[໑໒໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຢູ່ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ “ພິກຂຸທັງຫຼາຍ” ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

“ພິກຂຸທັງຫຼາຍ ໄພ[໑]ທັງປວງທີ່ເກີດຂຶ້ນ ລ້ວນເກີດຈາກຄົນພານ ບໍ່ແມ່ນເກີດຈາກບັນດິດ ອຸປັດທະວະ[໒]ທັງປວງທີ່ເກີດຂຶ້ນ ລ້ວນເກີດຈາກຄົນພານ ບໍ່ແມ່ນເກີດຈາກບັນດິດ ອຸປະສັກ[໓]ທັງປວງທີ່ເກີດຂຶ້ນ ລ້ວນເກີດຈາກຄົນພານ ບໍ່ແມ່ນເກີດຈາກບັນດິດ ໄພທັງປວງທີ່ເກີດຂຶ້ນ ລ້ວນເກີດຈາກຄົນພານ ບໍ່ແມ່ນເກີດຈາກບັນດິດ ອຸປັດທະວະ ທັງປວງທີ່ເກີດຂຶ້ນ ລ້ວນເກີດຈາກຄົນພານ ບໍ່ແມ່ນເກີດຈາກບັນດິດ ອຸປະສັກທັງປວງທີ່ເກີດຂຶ້ນ ລ້ວນເກີດຈາກຄົນພານ ບໍ່ແມ່ນເກີດຈາກບັນດິດ

ປຽບຄື ໄຟທີ່ລຸກລາມຈາກເຮືອນໄມ້ອໍ້ ຫຼື ເຮືອນຫຍ້າ ໄໝ້ແມ່ນເຮືອນຍອດທີ່ເຂົາໂບກທັງພາຍໃນແລະພາຍນອກ ລົມພັດເຂົ້າບໍ່ໄດ້ ມີບານປະຕູອັດແຈບມິດ ປ່ອງຢ້ຽມອັດແຈບມິດສັນນັ້ນ

ຄົນພານມີໄພ ບັນດິດບໍ່ມີໄພ ຄົນພານມີອຸປັດທະວະ ບັນດິດບໍ່ມີອຸປັດທະວະ ຄົນພານມີອຸປະສັກ ບັນດິດບໍ່ມີອຸປະສັກ ໄພບໍ່ມີຈາກບັນດິດ ອຸປັດທະວະບໍ່ມີຈາກບັນດິດອຸປະສັກບໍ່ມີຈາກບັນດິດ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ “ເຮົາທັງຫຼາຍຈັກເປັນບັນດິດ”

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະອານົນໄດ້ຂາບທູນພຣະຜູ້ມີພຣະພາກວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ດ້ວຍເຫດມີປະມານທໍ່ໃດນໍ? ຈຶ່ງຄວນຮຽກວ່າ “ພິກຂຸຜູ້ເປັນບັນດິດ ມີປັນຍາເຄື່ອງຮິ່ນຕອງ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ອານົນ ຍ້ອນພິກຂຸເປັນຜູ້ສະຫຼາດໃນທາດ ສະຫຼາດໃນອາຍະຕະນະ ສະຫຼາດໃນປະຕິດຈະສະມຸບບາດ ແລະສະຫຼາດໃນຖານະແລະອະຖານະ ອານົນ ດ້ວຍເຫດມີປະມານທໍ່ນີ້ແລ ຈຶ່ງຄວນຮຽກວ່າ “ພິກຂຸຜູ້ເປັນບັນດິດ ມີປັນຍາເຄື່ອງຮິ່ນຕອງ”

## ຜູ້ສະຫຼາດໃນທາດ

[໑໔໕] ທ່ານພຣະອານົນທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ດ້ວຍເຫດມີປະມານທໍ່ໃດ ຈຶ່ງຄວນຮຽກວ່າ "ພິກຂຸຜູ້ສະຫຼາດໃນທາດ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ທາດ ໑໘ ປະການນີ້ ຄື

໑. ຈັກຂຸທາດ (ທາດຄືຈັກຂຸປະສາດ)
໒. ຣູປະທາຕຸ (ທາດຄືຣູປາຣົມ)
໓. ຈັກຂຸວິນຍານທາດ (ທາດຄືຈັກຂຸວິນຍານ)
໔. ໂສຕະທາດ (ທາດຄືໂສຕະປະສາດ)
໕. ສັດທະທາດ (ທາດຄືສັດທາຣົມ)
໖. ໂສຕະວິນຍານທາດ (ທາດຄືໂສຕະວິນຍານ)
໗. ຄານະທາຕ (ທາດຄືຄານະປະສາດ)
໘. ຄັນທະທາດ (ທາດຄືຄັນທາຣົມ)
໙. ຄານະວິນຍານທາດ (ທາດຄືຄານະວິນຍານ)
໑໐. ຊິວຫາທາດ (ທາດຄືຊິວຫາປະສາດ)
໑໑. ຣະສະທາຕ (ທາດຄືຣະສາຣົມ)
໑໒. ຊິວຫາວິນຍານທາດ (ທາດຄືຊິວຫາວິນຍານ)
໑໓. ກາຍະທາຕຸ (ທາດຄືກາຍປະສາດ)
໑໔. ໂຜຕທັບພະທາດ (ທາດຄືໂຜຕທັພພາຣົມ)
໑໕. ກາຍວິນຍານທາດ (ທາດຄືກາຍວິນຍານ)
໑໖. ມະໂນທາດ (ທາດຄືມະໂນ)
໑໗. ທຳມະທາດ (ທາດຄືທຳມາຣົມ)
໑໘. ມະໂນວິນຍານທາດ (ທາດຄືມະໂນວິນຍານ)

ອານົນ ຍ້ອນເຫດທີ່ພິກຂຸຮູ້ເຫັນທາດ ໑໘ ປະການນີ້ແລ ຈຶ່ງຄວນຮຽກວ່າ "ພິກຂຸຜູ້ສະ ຫຼາດໃນທາດ" (໑)

"ຂ້າແດ່ ພຣະອົງຜູ້ຈະເລີນ ມີບັນລະຍາຍອື່ນອີກບໍ່ ທີ່ຄວນຮຽກວ່າ "ພິກຂຸຜູ້ສະຫຼາດໃນ ທາດ"

"ອານົນ ມີທາດ ໖ ປະການນີ້ ຄື

໑. ປະຖະວີທາດ    ໒. ອາໂປທາດ
໓. ເຕໂຊທາດ    ໔. ວາໂຍທາດ
໕. ອາກາດທາດ    ໖. ວິນຍານທາດ

ອານົນ ຍ້ອນເຫດທີ່ພິກຂຸຮູ້ເຫັນທາດ ໖ ປະການນີ້ແລ ຈຶ່ງຄວນຮຽກວ່າ "ພິກຂຸຜູ້ສະຫຼາດໃນທາດ" (໒)

"ຂ້າແດ່ ພຣະອົງຜູ້ຈະເລີນ ມີບັນລະຍາຍອື່ນອີກບໍ່ ທີ່ຄວນຮຽກວ່າ "ພິກຂຸຜູ້ສະຫຼາດໃນທາດ"

"ອານົນ ມີທາດ ໖ ປະການນີ້ ຄື

໑. ສຸກຂະທາດ (ທາດຄືສຸກ)
໒. ທຸກຂະທາດ (ທາດຄືທຸກ)
໓. ໂສມະນັດສະທາດ (ທາດຄືໂສມະນັດ)
໔. ໂທມະນັດສະທາດ (ທາດຄືໂທມະນັດ)
໕. ອຸເປກຂາທາດ (ທາດຄືອຸເປກຂາ)
໖. ອະວິດຊາທາດ (ທາດຄືອະວິດຊາ)

ອານົນ ຍ້ອນເຫດທີ່ພິກຂຸຮູ້ເຫັນທາດ ໖ ປະການນີ້ແລ ຈຶ່ງຄວນຮຽກວ່າ "ພິກຂຸຜູ້ສະຫຼາດໃນທາດ" (໓)

"ຂ້າແດ່ ພຣະອົງຜູ້ຈະເລີນ ມີບັນລະຍາຍອື່ນອີກບໍ່ ທີ່ຄວນຮຽກວ່າ "ພິກຂຸຜູ້ສະຫຼາດໃນທາດ"

"ອານົນ ມີທາດ ໖ ປະການ ຄື

໑. ກາມທາດ (ທາດຄືກາມ)
໒. ເນກຂຳມະທາດ (ທາດຄືເນກຂຳມະ)
໓. ພະຍາບາດທາດ (ທາດຄືພະຍາບາດ)
໔. ອະພະຍາບາດທາດ (ທາດຄືອະພະຍາບາດ)
໕. ວິຫິງສາທາດ (ທາດຄືວິຫິງສາ)
໖. ອະວິຫິງສາທາດ (ທາດຄືອະວິຫິງສາ)

ອານົນ ຍ້ອນເຫດທີ່ພິກຂຸຮູ້ເຫັນທາດ ໖ ປະການນີ້ແລ ຈຶ່ງຄວນຮຽກວ່າ "ພິກຂຸຜູ້ສະຫຼາດໃນທາດ" (໔)

"ຂ້າແດ່ ພຣະອົງຜູ້ຈະເລີນ ມີບັນລະຍາຍອື່ນອີກບໍ່ ທີ່ຄວນຮຽກວ່າ "ພິກຂຸຜູ້ສະຫຼາດໃນທາດ"

"ອານົນ ມີທາດ ໓ ປະການນີ້ ຄື

໑. ກາມທາດ (ທາດຄືກາມາຣົມ)
໒. ຮູບທາດ (ທາດຄືຮູປາຣົມ)
໓. ອະຮູບທາດ (ທາດຄືອະຮູປາຣົມ)

ອານົນ ຍ້ອນເຫດທີ່ພິກຂຸຮູ້ເຫັນທາດ ໓ ປະການນີ້ແລ ຈຶ່ງຄວນຮຽກວ່າ "ພິກຂຸຜູ້ສະຫຼາດໃນທາດ" (໕)

"ຂ້າແດ່ ພຣະອົງຜູ້ຈະເລີນ ມີບັນລະຍາຍອື່ນອີກບໍ່ ທີ່ຄວນຮຽກວ່າ "ພິກຂຸຜູ້ສະຫຼາດໃນທາດ"

"ອານົນ ມີທາດ ໒ ປະການນີ້ ຄື

໑. ສັງຂະຕະທາດ (ທາດຄືສັງຂະຕະທຳ)
໒. ອະສັງຂະຕະທາດ (ທາດຄືອະສັງຂະຕະທຳ)

ອານົນ ຍ້ອນເຫດທີ່ພິກຂຸຮູ້ເຫັນທາດ ໒ ປະການນີ້ແລ ຈຶ່ງຄວນຮຽກວ່າ "ພິກຂຸຜູ້ສະຫຼາດໃນທາດ" (໖)

## ຜູ້ສະຫຼາດໃນອາຍະຕະນະ

[໑໒໖] "ຂ້າແດ່ ພຣະອົງຜູ້ຈະເລີນ ດ້ວຍເຫດມີປະມານທໍ່ໃດ ຈຶ່ງຄວນຮຽກວ່າ "ພິກຂຸຜູ້ສະຫຼາດໃນອາຍະຕະນະ"

"ອານົນ ອາຍະຕະນະພາຍໃນແລະພາຍນອກ ແນວລະ ໖ ປະການນີ້ ຄື

໑. ຈັກຂຸ (ຕາ) ຄູ່ກັບຮູບ
໒. ໂສຕະ (ຫູ) ຄູ່ກັບສັດທະ (ສຽງ)
໓. ຄານະ (ດັງ) ຄູ່ກັບຄັນທະ (ກິ່ນ)
໔. ຊິວຫາ (ລີ້ນ) ຄູ່ກັບຣົດ
໕. ກາຍະຄູ່ກັບໂຜດຖັບພະ
໖. ມະໂນ (ໃຈ) ຄູ່ກັບທຳມາຣົມ

ອານົນ ຍ້ອນເຫດທີ່ພິກຂຸຮູ້ເຫັນອາຍະຕະນະພາຍໃນ ແລະ ພາຍນອກແນວລະ ໖ ປະການນີ້ແລ ຈຶ່ງຄວນຮຽກວ່າ "ພິກຂຸຜູ້ສະຫຼາດໃນອາຍະຕະນະ"

“ຂ້າແດ່ ພຣະອົງຜູ້ຈະເລີນ ດ້ວຍເຫດມີປະມານທໍ່ໃດ ຈຶ່ງຄວນຮຽກວ່າ “ພິກຂຸຜູ້ສະຫຼາດໃນປະຕິດຈະສະມຸບບາດ”

“ອານົນ ພິກຂຸໃນທຳວິໄນນີ້ ຍ່ອມຮູ້ແນວນີ້ວ່າ “ເມື່ອສິ່ງນີ້ມີ ສິ່ງນີ້ຈຶ່ງມີ ຍ້ອນສິ່ງນີ້ເກີດຂຶ້ນ ສິ່ງນີ້ຈຶ່ງເກີດຂຶ້ນ ເມື່ອສິ່ງນີ້ບໍ່ມີ ສິ່ງນີ້ຈຶ່ງບໍ່ມີ ຍ້ອນສິ່ງນີ້ດັບ ສິ່ງນີ້ຈຶ່ງດັບ ຄື

| | |
|---|---|
| ຍ້ອນອະວິດຊາເປັນປັດໄຈ | ສັງຂານຈຶ່ງມີ |
| ຍ້ອນສັງຂານເປັນປັດໄຈ | ວິນຍານຈຶ່ງມີ |
| ຍ້ອນວິນຍານເປັນປັດໄຈ | ນາມຮູບຈຶ່ງມີ |
| ຍ້ອນນາມຮູບເປັນປັດໄຈ | ສະລາຍະຕະນະຈຶ່ງມີ |
| ຍ້ອນສະລາຍະຕະນະເປັນປັດໄຈ | ຜັດສະຈຶ່ງມີ |
| ຍ້ອນຜັດສະເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນເວທະນາເປັນປັດໄຈ | ຕັນຫາຈຶ່ງມີ |
| ຍ້ອນຕັນຫາເປັນປັດໄຈ | ອຸປາທານຈຶ່ງມີ |
| ຍ້ອນອຸປາທານເປັນປັດໄຈ | ພົບຈຶ່ງມີ |
| ຍ້ອນພົບເປັນປັດໄຈ | ຊາດຈຶ່ງມີ |

ຍ້ອນຊາດເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງມີ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ແຕ່ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ສັງຂານຈຶ່ງດັບ

| | |
|---|---|
| ຍ້ອນສັງຂານດັບ | ວິນຍານຈຶ່ງດັບ |
| ຍ້ອນວິນຍານດັບ | ນາມຮູບຈຶ່ງດັບ |
| ຍ້ອນນາມຮູບດັບ | ສະລາຍະຕະນະຈຶ່ງດັບ |
| ຍ້ອນສະລາຍະຕະນະດັບ | ຜັດສະຈຶ່ງດັບ |
| ຍ້ອນຜັດສະດັບ | ເວທະນາຈຶ່ງດັບ |
| ຍ້ອນເວທະນາດັບ | ຕັນຫາຈຶ່ງດັບ |
| ຍ້ອນຕັນຫາດັບ | ອຸປາທານຈຶ່ງດັບ |
| ຍ້ອນອຸປາທານດັບ | ພົບຈຶ່ງດັບ |
| ຍ້ອນພົບດັບ | ຊາດຈຶ່ງດັບ |

ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງດັບ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້”[໑]

ອານົນ ດ້ວຍເຫດມີປະມານເທົ່ານີ້ແລ ຈຶ່ງຄວນຮຽກວ່າ "ພິກຂຸຜູ້ສະຫຼາດໃນປະຕິດຈະສະມຸບບາດ"

## ຜູ້ສະຫຼາດໃນຖານະແລະອະຖານະ

[໑໒໗] "ຂ້າແດ່ ພຣະອົງຜູ້ຈະເລີນ ດ້ວຍເຫດມີປະມານເທົ່າໃດ ຈຶ່ງຄວນຮຽກວ່າ "ພິກຂຸຜູ້ສະຫຼາດໃນຖານະແລະອະຖານະ"

"ອານົນ ພິກຂຸໃນທຳວິໄນນີ້ ຮູ້ແຈ້ງວ່າ "ເປັນໄປບໍ່ໄດ້ທີ່ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິເພິ່ງຢຶດຖືສັງຂານໃດ ໆ ໂດຍຄວາມເປັນສະພາວະທ່ຽງ ແຕ່ເປັນໄປໄດ້ທີ່ປຸຖຸຊົນເພິ່ງຢຶດຖືສັງຂານໃດ ໆ ໂດຍຄວາມເປັນສະພາວະທ່ຽງ"

ຮູ້ແຈ້ງວ່າ "ເປັນໄປບໍ່ໄດ້ທີ່ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິເພິ່ງຢຶດຖືສັງຂານໃດ ໆ ໂດຍຄວາມເປັນສຸກ ແຕ່ເປັນໄປໄດ້ທີ່ປຸຖຸຊົນເພິ່ງຢຶດຖືສັງຂານໃດ ໆ ໂດຍຄວາມເປັນສຸກ"

ຮູ້ແຈ້ງວ່າ "ເປັນໄປບໍ່ໄດ້ທີ່ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິເພິ່ງຢຶດຖືທຳໃດ ໆ ໂດຍຄວາມເປັນອັດຕາ ແຕ່ເປັນໄປໄດ້ທີ່ປຸຖຸຊົນເພິ່ງຢຶດຖືທຳໃດ ໆ ໂດຍຄວາມເປັນອັດຕາ"

[໑໒໘] ຮູ້ແຈ້ງວ່າ "ເປັນໄປບໍ່ໄດ້ທີ່ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິເພິ່ງຂ້າມານດາ ແຕ່ເປັນໄປໄດ້ທີ່ປຸຖຸຊົນເພິ່ງຂ້າມານດາ"

ຮູ້ແຈ້ງວ່າ "ເປັນໄປບໍ່ໄດ້ທີ່ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິເພິ່ງຂ້າບິດາ ແຕ່ເປັນໄປໄດ້ທີ່ປຸຖຸຊົນເພິ່ງຂ້າບິດາ"

ຮູ້ແຈ້ງວ່າ "ເປັນໄປບໍ່ໄດ້ທີ່ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິເພິ່ງຂ້າພຣະອະຣະຫັນ ແຕ່ເປັນໄປໄດ້ທີ່ປຸຖຸຊົນເພິ່ງຂ້າພຣະອະຣະຫັນ"

ຮູ້ແຈ້ງວ່າ "ເປັນໄປບໍ່ໄດ້ທີ່ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິເພິ່ງມີຈິດຄິດປະທຸດສະຮ້າຍ ທຳຮ້າຍຕະຖາຄົດໃຫ້ຫໍ້ເລືອດ ແຕ່ເປັນໄປໄດ້ທີ່ປຸຖຸຊົນເພິ່ງມີຈິດປະທຸດສະຮ້າຍທຳຮ້າຍຕະຖາຄົດໃຫ້ຫໍ້ເລືອດ"

ຮູ້ແຈ້ງວ່າ "ເປັນໄປບໍ່ໄດ້ທີ່ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິເພິ່ງທຳລາຍສົງ ແຕ່ເປັນໄປໄດ້ທີ່ປຸຖຸຊົນເພິ່ງທຳລາຍສົງ"

ຮູ້ແຈ້ງວ່າ "ເປັນໄປບໍ່ໄດ້ທີ່ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິເພິ່ງນັບຖືສາດສະດາອື່ນ ແຕ່ເປັນໄປໄດ້ທີ່ປຸຖຸຊົນເພິ່ງນັບຖືສາດສະດາອື່ນ"

[໑໒໙] ຮູ້ແຈ້ງວ່າ "ເປັນໄປບໍ່ໄດ້ທີ່ພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ໒ ພຣະອົງ ເພິ່ງ ສະເດັດອຸບັດພ້ອມກັນໃນໂລກກະທາດດຽວກັນ[໑] ແຕ່ເປັນໄປໄດ້ທີ່ພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ພຣະອົງດຽວ ເພິ່ງສະເດັດອຸບັດໃນໂລກກະທາດດຽວ"

ຮູ້ແຈ້ງວ່າ ເປັນໄປບໍ່ໄດ້ທີ່ພຣະເຈົ້າຈັກກະພັດ ໒ ພຣະອົງເພິ່ງສະເດັດອຸບັດພ້ອມກັນໃນໂລກກະທາດດຽວກັນ ແຕ່ເປັນໄປໄດ້ທີ່ພຣະເຈົ້າຈັກກະພັດພຣະອົງດຽວເພິ່ງສະເດັດອຸບັດໃນໂລກກະທາດດຽວ"[໒]

[໑໓໐] ຮູ້ແຈ້ງວ່າ "ເປັນໄປບໍ່ໄດ້ທີ່ສະຕີເພິ່ງເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ແຕ່ເປັນໄປໄດ້ທີ່ບຸຣຸດເພິ່ງເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ"

ຮູ້ແຈ້ງວ່າ "ເປັນໄປບໍ່ໄດ້ທີ່ສະຕີເພິ່ງເປັນພຣະເຈົ້າຈັກກະພັດ ແຕ່ເປັນໄປໄດ້ທີ່ບຸຣຸດເພິ່ງເປັນພຣະເຈົ້າຈັກກະພັດ"

ຮູ້ແຈ້ງວ່າ "ເປັນໄປບໍ່ໄດ້ທີ່ສະຕີເພິ່ງຄອງຄວາມເປັນທ້າວສັກກະ ຯລຯ ເປັນມານ ຯລຯ ເປັນພົມ ແຕ່ເປັນໄປໄດ້ທີ່ບຸຣຸດເພິ່ງຄອງຄວາມເປັນທ້າວສັກກະ ຯລຯ ເປັນມານ ຯລຯ ເປັນພົມ

[໑໓໑] ຮູ້ແຈ້ງວ່າ "ເປັນໄປບໍ່ໄດ້ທີ່ກາຍທຸດຈະຣິດຈະເພິ່ງເກີດຜົນທີ່ໜ້າປາຖະໜາ ໜ້າຕ້ອງການໜ້າພໍໃຈ ແຕ່ເປັນໄປໄດ້ທີ່ກາຍທຸດຈະຣິດຈະເພິ່ງເກີດຜົນທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ"

ຮູ້ແຈ້ງວ່າ "ເປັນໄປບໍ່ໄດ້ທີ່ວະຈີທຸດຈະຣິດ ຯລຯ ເປັນໄປບໍ່ໄດ້ທີ່ມະໂນທຸດຈະຣິດຈະເພິ່ງເກີດຜົນທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ແຕ່ເປັນໄປໄດ້ທີ່ວະຈີທຸດຈະຣິດ ຯລຯ ແຕ່ເປັນໄປໄດ້ທີ່ມະໂນທຸດຈະຣິດຈະເພິ່ງເກີດຜົນ ທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ"

ຮູ້ແຈ້ງວ່າ "ເປັນໄປບໍ່ໄດ້ທີ່ກາຍສຸດຈະຣິດຈະເພິ່ງເກີດຜົນທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ແຕ່ເປັນໄປໄດ້ທີ່ກາຍສຸດຈະຣິດຈະເພິ່ງເກີດຜົນທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ"

ຮູ້ແຈ້ງວ່າ "ເປັນໄປບໍ່ໄດ້ທີ່ວະຈີສຸຈະຣິດ ຯລຯ ເປັນໄປບໍ່ໄດ້ທີ່ມະໂນສຸດຈະຣິດຈະເພິ່ງເກີດຜົນທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ແຕ່ເປັນໄປໄດ້ທີ່ວະຈີສຸຈະຣິດ ຯລຯ ແຕ່ເປັນໄປໄດ້ທີ່ມະໂນສຸດຈະຣິດ ຈະເພິ່ງເກີດຜົນທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ"

ຮູ້ແຈ້ງວ່າ "ເປັນໄປບໍ່ໄດ້ທີ່ບຸກຄົນຜູ້ພຽບພ້ອມດ້ວຍກາຍທຸດຈະຣິດ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸຄະຕິໂລກສະຫວັນ ຍ້ອນຄວາມພຽບພ້ອມດ້ວຍກາຍທຸດຈະຣິດເປັນເຫດເປັນປັ

ດໃຈ ແຕ່ເປັນໄປໄດ້ທີ່ບຸກຄົນຜູ້ພຽບພ້ອມດ້ວຍກາຍທຸດຈະຣິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ຍ້ອນຄວາມພຽບພ້ອມດ້ວຍກາຍທຸດຈະຣິດເປັນເຫດເປັນປັດໃຈ"

ຮູ້ແຈ້ງວ່າ "ເປັນໄປບໍ່ໄດ້ທີ່ບຸກຄົນຜູ້ພຽບພ້ອມດ້ວຍວະຈີທຸດຈະຣິດ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸຄະຕິໂລກສະຫວັນ ຍ້ອນຄວາມພຽບພ້ອມດ້ວຍວະຈີທຸດຈະຣິດເປັນເຫດເປັນປັດໃຈ ແຕ່ເປັນໄປໄດ້ທີ່ບຸກຄົນຜູ້ພຽບພ້ອມດ້ວຍວະຈີທຸດຈະຣິດ ຯລຯ ແຕ່ເປັນໄປໄດ້ທີ່ບຸກຄົນຜູ້ພຽບພ້ອມດ້ວຍມະໂນທຸດຈະຣິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ຍ້ອນຄວາມພຽບພ້ອມດ້ວຍມະໂນທຸດຈະຣິດເປັນເຫດເປັນປັດໃຈ"

ຮູ້ແຈ້ງວ່າ "ເປັນໄປບໍ່ໄດ້ທີ່ບຸກຄົນຜູ້ພຽບພ້ອມດ້ວຍກາຍສຸດຈະຣິດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ຍ້ອນຄວາມພຽບພ້ອມດ້ວຍກາຍສຸດຈະຣິດເປັນເຫດເປັນປັດໃຈ ແຕ່ເປັນໄປໄດ້ທີ່ບຸກຄົນຜູ້ພຽບພ້ອມດ້ວຍກາຍສຸດຈະຣິດຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸຄະຕິໂລກສະຫວັນ ຍ້ອນຄວາມພຽບພ້ອມດ້ວຍກາຍສຸດຈະຣິດເປັນເຫດເປັນປັດໃຈ"

ຮູ້ແຈ້ງວ່າ ເປັນໄປບໍ່ໄດ້ທີ່ບຸກຄົນຜູ້ພຽບພ້ອມດ້ວຍວະຈີສຸຈະຣິດ ຯລຯ ເປັນໄປບໍ່ໄດ້ທີ່ບຸກຄົນຜູ້ພຽບພ້ອມດ້ວຍມະໂນສຸດຈະຣິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ຍ້ອນຄວາມພຽບພ້ອມດ້ວຍມະໂນສຸດຈະຣິດນັ້ນເປັນເຫດເປັນປັດໃຈ ແຕ່ເປັນໄປໄດ້ທີ່ບຸກຄົນຜູ້ພຽບພ້ອມດ້ວຍວະຈີສຸຈະຣິດ ຯລຯ ແຕ່ເປັນໄປໄດ້ທີ່ບຸກຄົນຜູ້ພຽບພ້ອມດ້ວຍມະໂນສຸດຈະຣິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸຄະຕິໂລກສະຫວັນ ຍ້ອນຄວາມພຽບພ້ອມດ້ວຍມະໂນສຸດຈະຣິດເປັນເຫດເປັນປັດໃຈ"[໑]

ອານົນ ດ້ວຍເຫດມີປະມານເທົ່ານີ້ແລ ຈຶ່ງຄວນຮຽກວ່າ "ພິກຂຸຜູ້ສະຫຼາດໃນຖານະແລະອະຖານະ"

[໑໓໔] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະອານົນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທຳບັນລະຍາຍນີ້ຊື່ອັນໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຍ້ອນເຫດນັ້ນແລ ທ່ານຈົ່ງຈືທຳບັນລະຍາຍນີ້ໄວ້ວ່າຊື່ພະຫຸທາດກະແດ່ ຊື່ ຈະຕຸປະຣິວັດຕະແດ່ ຊື່ ທຳມາທາສະແດ່ ຊື່ ອະມະຕະທຸນທຸພິແດ່ ຊື່ອະນຸດຕະຣະສັງຄາມວິຊຍະແດ່"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະອານົນມີໃຈຍິນດີ ຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ພະຫຸທາຕຸກະສູດທີ ໕ ຈົບ**

# ໖. ອິຊິຄິລິສູດ

## ວ່າດ້ວຍພູອິຊິຄິລິ

[໑໓໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ທີ່ພູອິຊິຄິລິ ເຂດນະຄອນຣາດຊະຄື ຢູ່ໃນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ

ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດຖາມວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍເຫັນພູເວພາລະນັ້ນບໍ?"

ພິກຂຸເຫຼົ່ານັ້ນ ທູນຕອບວ່າ "ເຫັນ ຂ້ານ້ອຍ"

"ພູເວພາລະນັ້ນ ມີຊື່ເປັນແນວໜຶ່ງ ມີບັນຍັດເປັນແນວໜຶ່ງ ທ່ານທັງຫຼາຍເຫັນພູປັນທະວະນັ້ນບໍ່?"

"ເຫັນ ຂ້ານ້ອຍ"

"ແມ່ນພູປັນທະວະນັ້ນ ມີຊື່ເປັນແນວໜຶ່ງ ມີບັນຍັດເປັນແນວໜຶ່ງ ທ່ານທັງຫຼາຍເຫັນພູເວປຸນລະນັ້ນບໍ່?"

"ເຫັນ ຂ້ານ້ອຍ"

"ແມ່ນພູເວປຸນລະນັ້ນ ມີຊື່ເປັນແນວໜຶ່ງ ມີບັນຍັດເປັນແນວໜຶ່ງ ທ່ານທັງຫຼາຍເຫັນພູຄິດຊະກູດນັ້ນບໍ່?"

"ເຫັນ ຂ້ານ້ອຍ"

"ແມ່ນພູຄິດຊະກູດນັ້ນ ມີຊື່ເປັນແນວໜຶ່ງ ມີບັນຍັດເປັນແນວໜຶ່ງ ທ່ານທັງຫຼາຍເຫັນພູອິຊິຄິລິນີ້ບໍ່"

"ເຫັນ ຂ້ານ້ອຍ"

"ພິກຂຸທັງຫຼາຍ ແຕ່ພູອິຊິຄິລິນີ້ນັ້ນ ມີຊື່ແນວນີ້ ມີບັນຍັດແນວນີ້ເລື້ອງເຄີຍມີມາແລ້ວ ພຣະປັດເຈກພຸດທະເຈົ້າ ໕໐໐ ອົງ ໄດ້ອາໄສຢູ່ທີ່ພູອິຊິຄິລິນີ້ມາດົນ ພຣະປັດເຈກພຸດທະເຈົ້າເຫຼົ່ານັ້ນກຳລັງເຂົ້າໄປສູ່ພູນີ້ ປະຊາຊົນເຫັນ ແຕ່ພໍທ່ານເຂົ້າໄປແລ້ວ ປະຊາຊົນບໍ່ເຫັນ ປະຊາຊົນທັງຫຼາຍເຫັນເຫດດັ່ງກ່າວນັ້ນ ຈຶ່ງເວົ້າກັນແນວນີ້ວ່າ "ພູນີ້ກືນກິນລືສີເຫຼົ່ານີ້" ພູນີ້ຈຶ່ງຜາກົດຊື່ວ່າ ອິຊິຄິລິ ອິຊິຄິລິ ດັ່ງນີ້

ພິກຂຸທັງຫຼາຍ ເຮົາຈັກບອກ ຣະບຸ ສະແດງ ຊື່ຂອງພຣະປັດເຈກພຸດທະເຈົ້າທັງຫຼາຍ

ທ່ານທັງຫຼາຍຈົ່ງຕັ້ງໃຈຟັງຊື່ຂອງພຣະປັດເຈກພຸດທະເຈົ້າທັງຫຼາຍນັ້ນ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

[໑໓໔] "ພິກຂຸທັງຫຼາຍ ພຣະອະຣິດຖະປັດເຈກສຳພຸດທະເຈົ້າ ໄດ້ອາໄສຢູ່ທີ່ພູອິຊິຄິລິນີ້ມາດົນແລ້ວ ພຣະອຸປະຣິດຖະປັດເຈກສຳພຸດທະເຈົ້າ ໄດ້ອາໄສຢູ່ທີ່ພູອິຊິຄິລິນີ້ມາດົນແລ້ວ ພຣະຕະຄະຣະສິຂີປັດເຈກສຳພຸດທະເຈົ້າ ໄດ້ອາໄສຢູ່ທີ່ພູອິຊິຄິລິນີ້ມາດົນແລ້ວ ພຣະຍະສັດສີປັດເຈກສຳພຸດທະເຈົ້າ ໄດ້ອາໄສຢູ່ທີ່ພູອິຊິຄິລິນີ້ມາດົນແລ້ວ ພຣະສຸທັດສະນະປັດເຈກສຳພຸດທະເຈົ້າ ໄດ້ອາໄສຢູ່ທີ່ພູອິຊິຄິລິນີ້ມາດົນແລ້ວ ພຣະປິຍະທັດສີປັດເຈກສຳພຸດທະເຈົ້າ ໄດ້ອາໄສຢູ່ທີ່ພູອິຊິຄິລິນີ້ມາດົນແລ້ວ ພຣະຄັນທາຣະປັດເຈກສຳພຸດທະເຈົ້າ ໄດ້ອາໄສຢູ່ທີ່ພູອິຊິຄິລິນີ້ມາດົນແລ້ວ ພຣະປິນໂທລະປັດເຈກສຳພຸດທະເຈົ້າ ໄດ້ອາໄສຢູ່ທີ່ພູອິຊິຄິລິນີ້ມາດົນແລ້ວ ພຣະອຸປາສະພະປັດເຈກສຳພຸດທະເຈົ້າ ໄດ້ອາໄສຢູ່ທີ່ພູອິຊິຄິລິນີ້ມາດົນແລ້ວ ພຣະນິຖະປັດເຈກສຳພຸດທະເຈົ້າ ໄດ້ອາໄສຢູ່ທີ່ພູອິຊິຄິລິນີ້ມາດົນແລ້ວ ພຣະຕະຖະປັດເຈກສຳພຸດທະເຈົ້າ ໄດ້ອາໄສຢູ່ທີ່ພູອິຊິຄິລິນີ້ມາດົນແລ້ວ ພຣະສຸຕະວາປັດເຈກສຳພຸດທະເຈົ້າ ໄດ້ອາໄສຢູ່ທີ່ພູອິຊິຄິລິນີ້ມາດົນແລ້ວ ພຣະພາວິຕັດຕະປັດເຈກສຳພຸດທະເຈົ້າ ໄດ້ອາໄສຢູ່ທີ່ພູອິຊິຄິລິນີ້ມາດົນແລ້ວ

[໑໓໕] ທ່ານທັງຫຼາຍຈົ່ງຕັ້ງໃຈຟັງເຮົາຜູ້ປະກາດ ຊື່
ຂອງພຣະປັດເຈກພຸດທະເຈົ້າ ທີ່ມີທຳເປັນສາລະກວ່າສັບພະສັດ
ບໍ່ມີຄວາມທຸກ ບໍ່ມີຄວາມຍາກໄດ້
ບັນລຸພຣະສຳໂພທິຍານສະເພາະຕົນ
ຜູ້ປາສະຈາກລູກສອນຄືຕັນຫາ ສູງກວ່ານໍຣະຊົນ ດັ່ງຕໍ່ໄປນີ້
ພຣະປັດເຈກພຸດທະເຈົ້າຜູ້ສິ້ນຕັນຫາເຄື່ອງນຳໄປສູ່ພົບ
ຄື ອະຣິດຖະພຸດທະ ໑ ອຸປະຣິດຖະພຸດທະ ໑ ຕະຄະຣະສິຂີພຸດທະ ໑
ຍະສັດສີພຸດທະ ໑ ສຸທັດສະນະພຸດທະ ໑ ປິຍະສັດສີພຸດທະ ໑
ຄັນທາຣະພຸດທະ ໑ ປິນໂທລະພຸດທະ ໑ ອຸປາສະພະພຸດທະ ໑
ນິຖະພຸດທະ ໑ ຕະຖະພຸດທະ ໑
ສຸຕະວາພຸດທະ ໑ ພາວິຕັດຕະພຸດທະ ໑
ສຸມະພະພຸດທະ ໑ ສຸພະພຸດທະ ໑ ເມຖຸລະພຸດທະ ໑
ອັດຖະມະພຸດທະ ໑ ອັດສຸເມຄະພຸດທະ ໑ ອະນິຄະພຸດທະ ໑
ສຸທາຖະພຸດທະ ໑ ພຣະປັດເຈກພຸດທະເຈົ້າຜູ້ມີອານຸພາບຫຼາຍ

ຄື ທີງຄູພຸດທະ ໑ ທີງຄະພຸດທະ ໑

ພຣະມຸນີຊື່ຊາລີນີ ໔ ອົງ ແລະພຣະອັດຖະກະພຸດທະ ໑
ໂກສັນລະພຸດທະ ໑ ອະຖະພຸດທະ ໑ ສຸພາຫຸພຸດທະ ໑
ອຸປະເນມີສະພຸດທະ ໑ ເນມີສະພຸດທະ ໑ ສັນຕະຈິດຕະພຸດທະ ໑
ສັດຈະພຸດທະ ໑ ຕະຖະພຸດທະ ໑ ວິຣະຊະພຸດທະ ໑
ປັນດິຕະພຸດທະ ໑ ກາລະພຸດທະ ໑ ອຸປະກາລະພຸດທະ ໑
ວິຊິຕະພຸດທະ ໑ ຊິຕະພຸດທະ ໑ ອັງຄະພຸດທະ ໑
ປັງຄະພຸດທະ ໑ ຄຸຕິດສິຕະພຸດທະ ໑
ປັດສີພຸດທະຜູ້ລະອຸປະທິອັນເປັນມູນແຫ່ງທຸກໄດ້ ໑

ອະປະຣາຊິຕະພຸດທະຜູ້ຊະນະມານແລະພົນມານ ໑
ສັດຖາພຸດທະ ໑ ປະວັດຕາພຸດທະ ໑ ສະຣະພັງຄະພຸດທະ ໑
ໂລມະຫັງສະພຸດທະ ໑ ອຸດຈັງຄະມາຍະພຸດທະ ໑ ອະສິຕະພຸດທະ ໑
ອະນາສະວະພຸດທະ ໑ ມະໂນມະຍະພຸດທະ ໑
ພັນທຸມາພຸດທະຜູ້ຕັດຂາດມານະໄດ້ ໑

ຕະທາທິມຸດຕະພຸດທະ ໑ ວິມະລະພຸດທະ ໑ ເກຕຸມາພຸດທະ ໑
ເກຕຸມະພະຣາຄະພຸດທະ ໑ ມາຕັງຄະພຸດທະ ໑ ອະຣິຍະພຸດທະ ໑
ອັດຈຸຕະພຸດທະ ໑ ອັດຈຸຕະຄາມະພຸດທະ ໑ ພະຍາມະກະພຸດທະ ໑
ສຸມັງຄະລະພຸດທະ ໑ ທັບພິລະພຸດທະ ໑ ສຸປະຕິດຖິຕະພຸດທະ ໑
ອະໄສທະພຸດທະ ໑ ເຂມາພິຣະຕະພຸດທະ ໑ ໂສຣະຕະພຸດທະ ໑

ທຸຣັນນະຍະພຸດທະ ໑ ສັງຄະພຸດທະ ໑ ອຸດຊະຍະພຸດທະ ໑
ພຣະມຸນີອົງໜຶ່ງຊື່ວ່າ ໄສທະ ຜູ້ມີຄວາມພຽນ ບໍ່ຕໍ່າຊາມ ໑
ພຣະປັດເຈກພຸດທະພຣະນາມວ່າ ອານັນທະ (໔ ອົງ)
ພຣະນາມວ່າ ນັນທະ (໔ ອົງ) ພຣະນາມວ່າ
ອຸປະນັນທະ (໔ ອົງ) ລວມ ໑໔ ອົງ
ແລະພາຣະທະວາຊະພຸດທະຜູ້ຊົງພຣະວໍຣະກາຍໃນພົບສຸດທ້າຍ ໑

ໂພທິພຸດທະ ໑ ມະຫານາມະພຸດທະ ໑ ອຸດຕະຣະພຸດທະ ໑
ເກສີພຸດທະ ໑ ສິຂີພຸດທະ ໑ ສຸນທະຣະພຸດທະ ໑
ພາຣະທະວາຊະພຸດທະ ໑ ຕິດສະພຸດທະ ໑
ອຸປະຕິດສະພຸດທະ ຜູ້ຕັດກິເລດເຄື່ອງຜູກມັດໃນພົບໄດ້ ໑
ອຸປະສິທະຣິພຸດທະ ໑ ແລະສິທະຣິພຸດທະ ຜູ້ຕັດຕັນຫາໄດ້ ໑

ມັງຄະລະພຸດທະ ຜູ້ປາສະຈາກຣາຄະ ໑

ອຸສະພະພຸດທະ ຜູ້ຕັດຕາໜ່າງອັນເປັນມູນແຫ່ງທຸກ ໑ ອຸປະນີຕະພຸດທະ
ໄດ້ບັນລຸບົດອັນສະງົບ ໑ ອຸໂປສະຖະພຸດທະ ໑ ສຸນທະຣະພຸດທະ ໑
ສັດຈະນາມະພຸດທະ ໑

ເຊຕະພຸດທະ ໑ ຊະຍັນຕະພຸດທະ ໑ ປະທຸມະພຸດທະ ໑
ອຸບປະລະພຸດທະ ໑ ປະທຸມຸດຕະຣະພຸດທະ ໑ ຣັກຂິຕະພຸດທະ ໑
ປັບພະຕະພຸດທະ ໑ ມານັດຖັດທະພຸດທະ ໑ ໂສພິຕະພຸດທະ ໑
ວີຕະຣາຄະພຸດທະ ໑ ກັນທະພຸດທະ ຜູ້ມີຈິດລຸດພົ້ນດີແລ້ວ ໑
ພຣະປັດເຈກພຸດທະເຈົ້າຜູ້ມີອານຸພາບຫຼາຍເຫຼົ່ານີ້
ແລະອື່ນ ໆ ຜູ້ສິ້ນຕັນຫາເຄື່ອງນຳໄປສູ່ພົບ
ທ່ານທັງຫຼາຍຈົ່ງໄຫວ້ພຣະປັດເຈກພຸດທະເຈົ້າເຫຼົ່ານັ້ນ
ຜູ້ລ່ວງກິເລດເປັນເຄື່ອງຂ້ອງທັງປວງໄດ້ແລ້ວ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ຜູ້ມີຄຸນອັນຫາປະມານບໍ່ໄດ້
ຜູ້ປະຣິນິບພານແລ້ວເທີ້ນ"

**ອິຊິຄິລິສູດທີ ໖ ຈົບ**

## ໗. ມະຫາຈັດຕາຣີສະກະສູດ

### ວ່າດ້ວຍທຳບັນລະຍາຍຊື່ມະຫາຈັດຕາຣີສະກະ

[໑໓໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຢູ່ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ເຮົາຈັກສະແດງສຳມາສະມາທິ[១]ອັນເປັນອະຣິຍະ[២] ທີ່ມີອຸປະນິສະ[៣] ແດ່ ມີປະຣິຂານ[៤]ແດ່ ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງສຳມາສະມາທິອັນເປັນອະຣິຍະນັ້ນ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ "ສຳມາສະມາທິ (ຕັ້ງຈິດໝັ້ນຖືກ) ອັນເປັນອະຣິຍະ ທີ່ມີອຸປະນິສະ ມີປະຣິຂານ ເປັນແນວໃດ?

ຄື ສຳມາທິດຖິ (ເຫັນຖືກ) ສຳມາສັງກັປປະ (ຄິດຖືກ) ສຳມາວາຈາ (ເຈຣະຈາຖືກ) ສຳມາກຳມັນຕະ (ການງານຖືກ) ສຳມາອາຊີວະ (ລ້ຽງຊີວິດຖືກ) ສຳມາວາຍາມະ (ພະຍາຍາມຖືກ) ສຳມາສະຕິ (ຣະນຶກຖືກ) ສະພາວະທີ່ຈິດມີອາລົມດຽວ ຮ້ອມລ້ອມດ້ວຍອົງ ໆ ນີ້ ເຮົາຮຽກວ່າ "ສຳມາສະມາທິອັນເປັນອະຣິຍະ ທີ່ມີອຸປະນິສະ" ແດ່ ຮຽກວ່າ "ສຳມາສະມາທິອັນເປັນອະຣິຍະມີປະຣິຂານ" ແດ່ ບັນດາອົງ ໆ ນັ້ນ ສຳມາທິດຖິເປັນຫົວໜ້າ

ສຳມາທິດຖິເປັນຫົວໜ້າ ເປັນແນວໃດ?

ຄື ພິກຂຸຮູ້ແຈ້ງມິດສາທິດຖິ່ວ່າ "ເປັນມິດສາທິດຖິ" ຮູ້ແຈ້ງສຳມາທິດຖິວ່າ "ເປັນ

ສຳມາທິດຖິ" ຄວາມຮູ້ຂອງພິກຂຸນັ້ນເປັນສຳມາທິດຖິ

ມິດສາທິດຖິ ເປັນແນວໃດ?

ຄື ຄວາມເຫັນວ່າ "ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການເຊັ່ນສວງ ທີ່ເຊັ່ນສວງແລ້ວບໍ່ມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີແລະເຮັດຊົ່ວບໍ່ມີ ໂລກນີ້ບໍ່ມີ ໂລກໜ້າບໍ່ມີ ມານດາບໍ່ມີຄຸນ ບິດາບໍ່ມີຄຸນ ສັດທີ່ເປັນໂອປະປາຕິກະກໍບໍ່ມີ ສະມະນະພາມຜູ້ປະພຶດປະຕິບັດມັກເຮັດໃຫ້ແຈ້ງໂລກນີ້ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງ ກໍບໍ່ມີໃນໂລກ"[๑] ນີ້ເປັນມິດສາທິດຖິ

ສຳມາທິດຖິ ເປັນແນວໃດ?

ຄື ເຮົາກ່າວສຳມາທິດຖິວ່າມີ ໒ ໄດ້ແກ່

໑. ສຳມາທິດຖິທີ່ຍັງມີອາສະວະ ເປັນສ່ວນແຫ່ງບຸນ ໃຫ້ຜົນຄືອຸປະທິ
໒. ສຳມາທິດຖິອັນເປັນອະຣິຍະ ທີ່ບໍ່ມີອາສະວະ ເປັນໂລກຸດຕະຣະ ເປັນອົງແຫ່ງມັກ

ສຳມາທິດຖິທີ່ຍັງມີອາສະວະ ເປັນສ່ວນແຫ່ງບຸນ ໃຫ້ຜົນຄືອຸປະທິ ເປັນແນວໃດ?

ຄື ຄວາມເຫັນວ່າ "ທານທີ່ໃຫ້ແລ້ວມີຜົນ ຍັນທີ່ບູຊາແລ້ວມີຜົນ ການເຊັ່ນສວງທີ່ເຊັ່ນສວງແລ້ວມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີແລະເຮັດຊົ່ວມີ ໂລກນີ້ມີ ໂລກໜ້າມີ ມານດາມີຄຸນ ບິດາມີຄຸນ ສັດທີ່ເປັນໂອປະປາຕິກະມີ ສະມະນະພາມຜູ້ປະພຶດປະຕິບັດມັກເຮັດໃຫ້ແຈ້ງໂລກນີ້

ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງກໍມີຢູ່ໃນໂລກ" ນີ້ເປັນສຳມາທິດຖິທີ່ຍັງມີອາສະວະ ເປັນສ່ວນແຫ່ງບຸນ ໃຫ້ຜົນຄືອຸປະທິ

ສຳມາທິດຖິອັນເປັນອະຣິຍະ ທີ່ບໍ່ມີອາສະວະ ເປັນໂລກຸດຕະຣະ ເປັນອົງແຫ່ງມັກ ເປັນແນວໃດ?

ຄື ປັນຍາ ປັນຍິນຊີ ປັນຍາພະລະ ທຳມະວິຈະຍະສຳໂພດຊົງ ສຳມາທິດຖິ ອົງແຫ່ງມັກຂອງພິກຂຸຜູ້ມີຈິດໄກຈາກຂ້າເສິກ ມີຈິດຫາອາສະວະບໍ່ໄດ້ ພຽບພ້ອມດ້ວຍອະຣິຍະມັກ ຈະເລີນອະຣິຍະມັກຢູ່ ນີ້ເປັນສຳມາທິດຖິອັນເປັນອະຣິຍະ ທີ່ບໍ່ມີອາສະວະ ເປັນໂລກຸຕຕະຣະ ເປັນອົງແຫ່ງມັກ ພິກຂຸນັ້ນ ຍ່ອມພະຍາຍາມເພື່ອລະມິດສາທິດຖິ ຍັງສຳມາທິດຖິໃຫ້ເຖິງພ້ອມ ຄວາມພະຍາຍາມຂອງພິກຂຸນັ້ນ ເປັນສຳມາວາຍາມະ ພິກຂຸນັ້ນ

ມີສະຕິ ລະມິດສາທິດຖິ ມີສະຕິເຂົ້າເຖິງສຳມາທິດຖິຢູ່ ສະຕິຂອງພິກຂຸນັ້ນເປັນສຳມາສະຕິ

ທຳ ໓ ນີ້ ຄື (໑) ສຳມາທິດຖິ (໔) ສຳມາວາຍາມະ (໓) ສຳມາສະຕິ ຍ່ອມຫ້ອມລ້ອມຄວນຕາມສຳມາທິດຖິຂອງພິກຂຸນັ້ນໄປ ດ້ວຍປະການຢ່າງນີ້

[໑໓໗] ພິກຂຸທັງຫຼາຍ ບັນດາອົງ ໗ ນັ້ນ ສຳມາທິດຖິເປັນຫົວໜ້າ ສຳມາທິດຖິເປັນຫົວໜ້າ ເປັນແນວໃດ?

ຄື ພິກຂຸຮູ້ແຈ້ງມິດສາສັງກັບປະວ່າ "ເປັນມິດສາສັງກັບປະ" ຮູ້ແຈ້ງສຳມາສັງກັບປະວ່າ "ເປັນສຳມາສັງກັບປະ" ຄວາມຮູ້ຂອງພິກຂຸນັ້ນເປັນສຳມາທິດຖິ

ມິດສາສັງກັບປະ ເປັນແນວໃດ?

ຄື ຄວາມດຳຣິໃນກາມ ຄວາມດຳຣິໃນຄວາມພະຍາບາດ ຄວາມດຳຣິໃນການບຽດບຽນນີ້ເປັນມິດສາສັງກັບປະ

ສຳມາສັງກັບປະ ເປັນແນວໃດ?

ຄື ເຮົາກ່າວສຳມາສັງກັບປະວ່າມີ ໔ ໄດ້ແກ່

໑. ສຳມາສັງກັບປະທີ່ຍັງມີອາສະວະ ເປັນສ່ວນແຫ່ງບຸນ ໃຫ້ຜົນຄືອຸປະທິ
໔. ສຳມາສັງກັບປະອັນເປັນອະຣິຍະ ທີ່ບໍ່ມີອາສະວະ ເປັນໂລກຸດຕະຣະ ເປັນອົງແຫ່ງມັກ

ສຳມາສັງກັບປະທີ່ຍັງມີອາສະວະ ເປັນສ່ວນແຫ່ງບຸນ ໃຫ້ຜົນຄືອຸປະທິ ເປັນແນວໃດ?

ຄື ຄວາມດຳຣິໃນການອອກຈາກກາມ ຄວາມດຳຣິໃນຄວາມບໍ່ພະຍາບາດ ຄວາມດຳຣິໃນການບໍ່ບຽດບຽນ ນີ້ເປັນສຳມາສັງກັບປະທີ່ຍັງມີອາສະວະ ເປັນສ່ວນແຫ່ງບຸນ ໃຫ້ຜົນຄືອຸປະທິ

ສຳມາສັງກັບປະອັນເປັນອະຣິຍະ ທີ່ບໍ່ມີອາສະວະ ເປັນໂລກຸດຕະຣະ ເປັນອົງແຫ່ງມັກ ເປັນແນວໃດ?

ຄື ຄວາມນຶກ ຄວາມວິຕົກ ຄວາມດຳຣິ ຄວາມແນ່ວແນ່ ຄວາມແໜ້ນ ຄວາມປັກໃຈ ຄວາມປຸງແຕ່ງຄຳ ຂອງພິກຂຸຜູ້ມີຈິດໄກຈາກຂ້າເສິກ ມີຈິດຫາອາສະວະບໍ່ໄດ້ ພຽບພ້ອມດ້ວຍອະຣິຍະມັກ ຈະເລີນອະຣິຍະມັກຢູ່ ນີ້ເປັນສຳມາສັງກັບປະອັນເປັນອະຣິຍະ ທີ່ບໍ່ມີອາສະວະ ເປັນໂລກຸຕຕະຣະ ເປັນອົງແຫ່ງມັກ ພິກຂຸນັ້ນຍ່ອມພະຍາຍາມເພື່ອລະມິດສາສັງກັບປະ ຍັງສຳມາສັງກັບປະໃຫ້ເຖິງພ້ອມ ຄວາມພະຍາຍາມຂອງພິກຂຸນັ້ນເປັນສຳມາວາຍາມະ ພິກຂຸນັ້ນມີສະຕິລະມິດສາສັງກັບປະ ມີສະຕິເຂົ້າເຖິງສຳມາສັງກັບປະຢູ່

ສະຕິຂອງພິກຂຸນັ້ນເປັນສຳມາສະຕິ ທຳ ໓ ນີ້ ຄື (໑) ສຳມາທິດຖິ (໒) ສຳມາວາຍາມະ (໓) ສຳມາສະຕິ ຍ່ອມຫ້ອມລ້ອມຄວບຕາມສຳມາສັງກັບປະຂອງພິກຂຸນັ້ນໄປ ດ້ວຍປະການຢ່າງນີ້

[໑໓໗] ພິກຂຸທັງຫຼາຍ ບັນດາອົງ ໆ ນັ້ນ ສຳມາທິດຖິເປັນຫົວໜ້າ

ສຳມາທິດຖິເປັນຫົວໜ້າ ເປັນແນວໃດ?

ຄື ພິກຂຸຮູ້ແຈ້ງມິດສາວາຈາວ່າ "ເປັນມິດສາວາຈາ" ຮູ້ແຈ້ງສຳມາວາຈາວ່າ "ເປັນສຳມາວາຈາ" ຄວາມຮູ້ຂອງພິກຂຸນັ້ນເປັນສຳມາທິດຖິ

ມິດສາວາຈາ ເປັນແນວໃດ?

ຄື ການເວົ້າຕົວະ ການເວົ້າສັບສໍ່ ການເວົ້າຄຳຫຍາບ ການເວົ້າບໍ່ມີສາຣະ ນີ້ເປັນມິດສາວາຈາ

ສຳມາວາຈາ ເປັນແນວໃດ?

ຄື ເຮົາກ່າວສຳມາວາຈາວ່າມີ ໒ ໄດ້ແກ່

໑. ສຳມາວາຈາທີ່ຍັງມີອາສະວະ ເປັນສ່ວນແຫ່ງບຸນ ໃຫ້ຜົນຄືອຸປະທິ
໒. ສຳມາວາຈາອັນເປັນອະຣິຍະ ທີ່ບໍ່ມີອາສະວະ ເປັນໂລກຸດຕະຣະ ເປັນອົງແຫ່ງມັກ

ສຳມາວາຈາທີ່ຍັງມີອາສະວະ ເປັນສ່ວນແຫ່ງບຸນ ໃຫ້ຜົນຄືອຸປະທິ ເປັນແນວໃດ?

ຄື ເຈຕະນາເປັນເຫດງົດເວັ້ນຈາກການເວົ້າຕົວະ ເຈຕະນາເປັນເຫດງົດເວັ້ນຈາກການເວົ້າສັບສໍ່ ເຈຕະນາເປັນເຫດງົດເວັ້ນຈາກການເວົ້າຄຳຫຍາບ ເຈຕະນາເປັນເຫດງົດເວັ້ນຈາກການເວົ້າບໍ່ມີສາຣະ ນີ້ເປັນສຳມາວາຈາທີ່ຍັງມີອາສະວະ ເປັນສ່ວນແຫ່ງບຸນ ໃຫ້ຜົນຄືອຸປະທິ

ສຳມາວາຈາອັນເປັນອະຣິຍະ ທີ່ບໍ່ມີອາສະວະ ເປັນໂລກຸດຕະຣະ ເປັນອົງແຫ່ງມັກ ເປັນແນວໃດ?

ຄື ການງົດ ການເວັ້ນ ການເວັ້ນຂາດ ເຈຕະນາເປັນເຫດງົດເວັ້ນຈາກວະຈີທຸດຈະຣິດ ໔ ຂອງພິກຂຸຜູ້ມີຈິດໄກຈາກຂ້າເສິກ ມີຈິດຫາອາສະວະບໍ່ໄດ້ ພຽບພ້ອມດ້ວຍອະຣິຍະມັກ ຈະເລີນອະຣິຍະມັກຢູ່ ນີ້ເປັນສຳມາວາຈາອັນເປັນອະຣິຍະ ທີ່ບໍ່ມີອາສະວະ ເປັນໂລກຸດຕະຣະ ເປັນອົງແຫ່ງມັກ ພິກຂຸຍ່ອມພະຍາຍາມເພື່ອລະມິດສາວາຈາ ຍັງສຳມາວາຈາໃຫ້ເຖິງພ້ອມຢູ່ ຄວາມພະຍາຍາມຂອງພິກຂຸນັ້ນເປັນສຳມາວາຍາມະ ພິກຂຸນັ້ນມີສະຕິ ລະມິດສາວາຈາ ມີສະຕິເຂົ້າເຖິງສຳມາວາຈາຢູ່ ສະຕິຂອງພິກຂຸນັ້ນເປັນສຳມາສະຕິ ທຳ ໓ ນີ້ ຄື (໑) ສຳມາທິດຖິ (໒) ສຳມາວາຍາມະ (໓) ສຳມາສະຕິ ຍ່ອມຫ້ອມລ້ອມຄອນຕາມ ສຳມາວາຈາຂອງພິກຂຸນັ້ນໄປ ດ້ວຍປະການຢ່າງນີ້

[໑໓໗] ພິກຂຸທັງຫຼາຍ ບັນດາອົງ ໆ ນັ້ນ ສຳມາທິດຖິເປັນຫົວໜ້າ

ສຳມາທິດຖິເປັນຫົວໜ້າ ເປັນແນວໃດ?

ຄື ພິກຂຸຮູ້ແຈ້ງມິດສາກຳມັນຕະວ່າ "ເປັນມິດສາກຳມັນຕະ" ຮູ້ແຈ້ງສຳມາກຳມັນຕະວ່າ "ເປັນສຳມາກຳມັນຕະ" ຄວາມຮູ້ຂອງພິກຂຸນັ້ນເປັນສຳມາທິດຖິ

ມິດສາກຳມັນຕະ ເປັນແນວໃດ?

ຄື ການຂ້າສັດ ການລັກຊັບ ການປະພຶດຜິດໃນກາມ ນີ້ເປັນມິດສາກຳມັນຕະ

ສຳມາກຳມັນຕະ ເປັນແນວໃດ?

ຄື ເຮົາກ່າວສຳມາກຳມັນຕະວ່າມີ ໒ ໄດ້ແກ່

໑. ສຳມາກຳມັນຕະທີ່ຍັງມີອາສະວະ ເປັນສ່ວນແຫ່ງບຸນ ໃຫ້ຜົນຄືອຸປະທິ
໒. ສຳມາກຳມັນຕະອັນເປັນອະຣິຍະ ທີ່ບໍ່ມີອາສະວະ ເປັນໂລກຸດຕະຣະ ເປັນອົງແຫ່ງມັກ

ສຳມາກຳມັນຕະທີ່ຍັງມີອາສະວະ ເປັນສ່ວນແຫ່ງບຸນ ໃຫ້ຜົນຄືອຸປະທິ ເປັນແນວໃດ?

ຄື ເຈຕະນາເປັນເຫດງົດເວັ້ນຈາກການຂ້າສັດ ເຈຕະນາເປັນເຫດງົດເວັ້ນຈາກການລັກຊັບ ເຈຕະນາເປັນເຫດງົດເວັ້ນຈາກການປະພຶດຜິດໃນກາມ ນີ້ເປັນສຳມາກຳມັນຕະ ທີ່ຍັງມີອາສະວະ ເປັນສ່ວນແຫ່ງບຸນ ໃຫ້ຜົນຄືອຸປະທິ

ສຳມາກຳມັນຕະອັນເປັນອະຣິຍະ ທີ່ບໍ່ມີອາສະວະ ເປັນໂລກຸດຕະຣະ ເປັນອົງແຫ່ງມັກ ເປັນແນວໃດ?

ຄື ການງົດ ການເວັ້ນ ການເວັ້ນຂາດ ເຈຕະນາເປັນເຫດງົດເວັ້ນຈາກກາຍທຸດຈະຣິດ ໓ ຂອງພິກຂຸຜູ້ມີຈິດໄກຈາກຂ້າເສິກ ມີຈິດຫາອາສະວະບໍ່ໄດ້ ພຽບພ້ອມດ້ວຍອະຣິຍະມັກ ຈະເລີນອະຣິຍະມັກຢູ່ ນີ້ເປັນສຳມາກຳມັນຕະອັນເປັນອະຣິຍະ ທີ່ບໍ່ມີອາສະວະ ເປັນໂລກຸດຕະຣະ ເປັນອົງແຫ່ງມັກ ພິກຂຸນັ້ນຍ່ອມພະຍາຍາມເພື່ອລະມິດສາກຳມັນຕະ ຍັງສຳມາກຳມັນຕະໃຫ້ເຖິງພ້ອມ ຄວາມພະຍາຍາມຂອງທ່ານນັ້ນເປັນສຳມາວາຍາມະ ພິກຂຸນັ້ນມີສະຕິລະມິດສາກຳມັນຕະ ມີສະຕິເຂົ້າເຖິງສຳມາກຳມັນຕະຢູ່ ສະຕິຂອງທ່ານນັ້ນເປັນສຳມາສະຕິ ທຳ ໓ ນີ້ ຄື (໑) ສຳມາທິດຖິ (໒) ສຳມາວາຍາມະ (໓) ສຳມາສະຕິ ຍ່ອມຫ້ອມລ້ອມຄວບຕາມສຳມາກຳມັນຕະຂອງພິກຂຸນັ້ນໄປ ດ້ວຍປະການຢ່າງນີ້

[໑໒໐] ພິກຂຸທັງຫຼາຍ ບັນດາອົງ ໆ ນັ້ນ ສຳມາທິດຖິເປັນຫົວໜ້າ

ສຳມາທິດຖິເປັນຫົວໜ້າ ເປັນແນວໃດ?

ຄື ພິກຂຸຮູ້ແຈ້ງມິດສາອາຊີວະວ່າ "ເປັນມິດສາອາຊີວະ" ຮູ້ແຈ້ງສຳມາອາຊີວະວ່າ "ເປັນສຳມາອາຊີວະ" ຄວາມຮູ້ຂອງພິກຂຸນັ້ນເປັນສຳມາທິດຖິ

ມິດສາອາຊີວະ ເປັນແນວໃດ?

ຄື ການເວົ້າຫຼອກລວງ ການລຽບຄຽງ ການຫວ່ານລ້ອມ ການເວົ້າແລະເລັມ ການໃຊ້ລາບຕໍ່ລາບ ນີ້ເປັນມິດສາອາຊີວະ

ສຳມາອາຊີວະ ເປັນແນວໃດ?

ຄື ເຮົາກ່າວສຳມາອາຊີວະວ່າມີ ໒ ໄດ້ແກ່

໑. ສຳມາອາຊີວະທີ່ຍັງມີອາສະວະ ເປັນສ່ວນແຫ່ງບຸນ ໃຫ້ຜົນຄືອຸປະທິ
໒. ສຳມາອາຊີວະອັນເປັນອະຣິຍະ ທີ່ບໍ່ມີອາສະວະ ເປັນໂລກຸດຕະຣະ ເປັນອົງແຫ່ງມັກ

ສຳມາອາຊີວະທີ່ຍັງມີອາສະວະ ເປັນສ່ວນແຫ່ງບຸນ ໃຫ້ຜົນຄືອຸປະທິ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ ຍ່ອມລະມິດສາອາຊີວະ ລ້ຽງຊີບດ້ວຍສຳມາອາຊີວະ ນີ້ເປັນສຳມາອາຊີວະ ທີ່ຍັງມີອາສະວະ ເປັນສ່ວນແຫ່ງບຸນ ໃຫ້ຜົນຄືອຸປະທິ

ສຳມາອາຊີວະອັນເປັນອະຣິຍະ ທີ່ບໍ່ມີອາສະວະ ເປັນໂລກຸດຕະຣະ ເປັນອົງແຫ່ງມັກ ເປັນແນວໃດ?

ຄື ການງົດ ການເວັ້ນ ການເວັ້ນຂາດ ເຈຕະນາເປັນເຫດງົດເວັ້ນຈາກມິດສາອາຊີວະ ຂອງພິກຂຸຜູ້ມີຈິດໄກຈາກຂ້າເສິກ ມີຈິດຫາອາສະວະບໍ່ໄດ້ ພຽບພ້ອມດ້ວຍອະຣິຍະມັກ ຈະເລີນອະຣິຍະມັກຢູ່ ນີ້ເປັນສຳມາອາຊີວະອັນເປັນອະຣິຍະ ທີ່ບໍ່ມີອາສະວະ ເປັນໂລກຸດຕະຣະ ເປັນອົງແຫ່ງມັກ ພິກຂຸນັ້ນຍ່ອມພະຍາຍາມເພື່ອລະມິດສາອາຊີວະ ຍັງສຳມາອາຊີວະໃຫ້ເຖິງພ້ອມ ຄວາມພະຍາຍາມຂອງພິກຂຸນັ້ນເປັນສຳມາວາຍາມະ ພິກຂຸນັ້ນມີສະຕິລະມິດສາອາຊີວະ ມີສະຕິເຂົ້າເຖິງສຳມາອາຊີວະຢູ່ ສະຕິຂອງພິກຂຸນັ້ນເປັນສຳມາສະຕິ ທຳ ໓ ນີ້ ຄື (໑) ສຳມາທິດຖິ (໒) ສຳມາວາຍາມະ (໓) ສຳມາສະຕິ ຍ່ອມຫ້ອມລ້ອມຄວນຕາມສຳມາອາຊີວະຂອງພິກຂຸນັ້ນໄປດ້ວຍປະການຢ່າງນີ້

[໑໔໑] ພິກຂຸທັງຫຼາຍ ບັນດາອົງ ໆ ນັ້ນ ສຳມາທິດຖິເປັນຫົວໜ້າ

ສຳມາທິດຖິເປັນຫົວໜ້າ ເປັນແນວໃດ?

ຄື ຜູ້ມີສຳມາທິດຖິ ສຳມາສັງກັບປະກໍມີພໍເໝາະ ຜູ້ມີສຳມາສັງກັບປະ ສຳມາວາຈາກໍມີພໍເໝາະ ຜູ້ມີສຳມາວາຈາ ສຳມາກຳມັນຕະກໍມີພໍເໝາະ ຜູ້ມີສຳມາກຳມັນຕະ ສຳມາອາຊີວະກໍມີພໍເໝາະ ຜູ້ມີສຳມາອາຊີວະ ສຳມາວາຍາມະກໍມີພໍເໝາະ ຜູ້ມີສຳມາວາຍາມະ ສຳມາສະຕິກໍມີພໍເໝາະ ຜູ້ມີສຳມາສະຕິ ສຳມາສະມາທິກໍມີພໍເໝາະ ຜູ້ມີສຳມາສະມາທິ ສຳມາຍານະກໍມີພໍເໝາະ ຜູ້ມີສຳມາຍານະ ສຳມາວິມຸດຕິກໍມີພໍເໝາະ

ພິກຂຸທັງຫຼາຍ ພຣະເສຂະຜູ້ປະກອບດ້ວຍອົງ ໘ ຈຶ່ງເປັນພຣະອະຣະຫັນຜູ້ປະກອບດ້ວຍອົງ ໑໐ (ແມ່ນໃນບັນດາອົງເຫຼົ່ານັ້ນ ບາບອະກຸສົນທຳເປັນອະເນກຫາຍໄປແລ້ວ ຍ່ອມເຖິງຄວາມບໍລິບູນດ້ວຍພາວະນາໂດຍສຳມາຍານະ) ດ້ວຍປະການຢ່າງນີ້

[໑໔໒] ພິກຂຸທັງຫຼາຍ ບັນດາອົງ ໆ ນັ້ນ ສຳມາທິດຖິເປັນຫົວໜ້າ

ສຳມາທິດຖິເປັນຫົວໜ້າ ເປັນແນວໃດ?

ຄື ສຳມາທິດຖິ ຍ່ອມທຳລາຍມິດສາທິດຖິໄດ້ ແລະ ບາບອະກຸສົນທຳເປັນອະເນກອັນມີມິດສາທິດຖິເປັນປັດໄຈ ກໍເປັນອັນຖືກສຳມາທິດຖິນັ້ນທຳລາຍແລ້ວ ກຸສົນທຳເປັນອະເນກອັນມີສຳມາທິດຖິເປັນປັດໄຈ ຍ່ອມເຖິງຄວາມຈະເລີນເຕັມທີ່

| | | | |
|---|---|---|---|
| ສຳມາສັງກັບປະ | ຍ່ອມທຳລາຍ | ມິດສາສັງກັບປະໄດ້ | ຯລຯ |
| ສຳມາວາຈາ | ຍ່ອມທຳລາຍ | ມິດສາວາຈາໄດ້ | ຯລຯ |
| ສຳມາກຳມັນຕະ | ຍ່ອມທຳລາຍ | ມິດສາກຳມັນຕະໄດ້ | ຯລຯ |
| ສຳມາອາຊີວະ | ຍ່ອມທຳລາຍ | ມິດສາອາຊີວະໄດ້ | ຯລຯ |
| ສຳມາວາຍາມະ | ຍ່ອມທຳລາຍ | ມິດສາວາຍາມະໄດ້ | ຯລຯ |
| ສຳມາສະຕິ | ຍ່ອມທຳລາຍ | ມິດສາສະຕິໄດ້ | ຯລຯ |
| ສຳມາສະມາທິ | ຍ່ອມທຳລາຍ | ມິດສາສະມາທິໄດ້ | ຯລຯ |
| ສຳມາຍານະ | ຍ່ອມທຳລາຍ | ມິດສາຍານະໄດ້ | ຯລຯ |

ສຳມາວິມຸດຕິ ຍ່ອມທຳລາຍມິດສາວິມຸດຕິໄດ້ ແລະບາບອະກຸສົນທຳເປັນອະເນກ ອັນມີມິດສາວິມຸດຕິເປັນປັດໄຈ ກໍເປັນອັນຖືກສຳມາວິມຸດຕິນັ້ນທຳລາຍແລ້ວ ກຸສົນທຳເປັນອະເນກອັນມີສຳມາວິມຸດຕິເປັນປັດໄຈ ຍ່ອມເຖິງຄວາມຈະເລີນເຕັມທີ່

ພິກຂຸທັງຫຼາຍ ເຮົາຈຶ່ງປະກາດທຳບັນລະຍາຍຊື່ວ່າ ມະຫາຈັດຕາຣີສະກະຝ່າຍກຸສົນ ໒໐ ປະການ ຝ່າຍອະກຸສົນ ໒໐ ປະການ ທີ່ສະມະນະພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກຍັງປະກາດບໍ່ໄດ້ໄວ້ ດ້ວຍປະການຢ່າງນີ້

[໑໔໓] ພິກຂຸທັງຫຼາຍ ສະມະນະຫຼືພາມຜູ້ໃດຜູ້ໜຶ່ງ ເພິ່ງເຂົ້າໃຈທຳບັນລະຍາຍຊື່ວ່າມະຫາຈັດຕາຣີສະກະ°ນີ້ ວ່າຄວນຕິຕຽນ ຫຼື ຄັດຄ້ານ ຄຳກ່າວເຊັ່ນນັ້ນ ແລ ະຄຳທີ່ກ່າວຕໍ່ ໆ ກັນມາ ໑໐ ປະການນີ້ຂອງສະມະນະ ຫຼື ພາມນັ້ນ ຈະເປັນເຫດໃຫ້ຖືກຕຳໜິໄດ້ໃນປັດຈຸບັນຢ່າງແນ່ນອນ ຄື

໑. ຖ້າທ່ານຜູ້ຈະເລີນຕິຕຽນສຳມາທິດຖິ ທ່ານຜູ້ຈະເລີນກໍຕ້ອງບູຊາສັນເສີນສະມະນະພາມຜູ້ເປັນມິດສາທິດຖິ
໒. ຖ້າທ່ານຜູ້ຈະເລີນຕິຕຽນສຳມາສັງກັບປະ ທ່ານຜູ້ຈະເລີນກໍຕ້ອງບູຊາສັນເສີນສະມະນະພາມຜູ້ເປັນມິດສາສັງກັບປະ
໓. ຖ້າທ່ານຜູ້ຈະເລີນຕິຕຽນສຳມາວາຈາ ຯລຯ
໔. ຖ້າທ່ານຜູ້ຈະເລີນຕິຕຽນສຳມາກຳມັນຕະ ຯລຯ
໕. ຖ້າທ່ານຜູ້ຈະເລີນຕິຕຽນສຳມາອາຊີວະ ຯລຯ

໖. ຖ້າທ່ານຜູ້ຈະເລີນຕິຕຽນສຳມາວາຍາມະ ຯລຯ
໗. ຖ້າທ່ານຜູ້ຈະເລີນຕິຕຽນສຳມາສະຕິ ຯລຯ
໘. ຖ້າທ່ານຜູ້ຈະເລີນຕິຕຽນສຳມາສະມາທິ ຯລຯ
໙. ຖ້າທ່ານຜູ້ຈະເລີນຕິຕຽນສຳມາຍານະ ຯລຯ
໑໐. ຖ້າທ່ານຜູ້ຈະເລີນຕິຕຽນສຳມາວິມຸດຕິ ທ່ານຜູ້ຈະເລີນກໍຕ້ອງບູຊາສັນເສີນສະມະນະພາມຜູ້ເປັນມິດສາວິມຸດຕິ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ເພິ່ງເຂົ້າໃຈທຳບັນລະຍາຍຊື່ວ່າມະຫາຈັດຕາຣີສະກະນີ້ ວ່າຕົນຄວນຕິຕຽນຫຼືຄວນຄັດຄ້ານ ຄຳກ່າວເຊັ່ນນັ້ນແລະຄຳທີ່ກ່າວຕໍ່ ໆ ກັນມາ ໑໐ ປະການນີ້ຂອງສະມະນະຫຼືພາມນັ້ນ ຈະເປັນເຫດໃຫ້ຖືກຕຳໜິໄດ້ໃນປັດຈຸບັນຢ່າງແນ່ນອນ

ພິກຂຸທັງຫຼາຍ ແມ່ນພວກວັດສະແລະພວກໄພຍະຊາວໂອກກະລະຊົນນະບົດ ຜູ້ເປັນອະເຫຕຸກະວາທະ[7] ອະກິຣິຍະວາທະ[8] ນັດຖິກະວາທະ[9] ເຫຼົ່ານັ້ນ ກໍຍັງເຂົ້າໃຈທຳບັນລະຍາຍຊື່ວ່າມະຫາຈັດຕາຣີສະກະ ວ່າບໍ່ຄວນຕິຕຽນ ບໍ່ຄວນຄັດຄ້ານ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຢ້ານການນິນທາ ການວ່າຮ້າຍ ແລະການແຂ່ງດີ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ມະຫາຈັດຕາຣີສະກະສູດທີ ໗ ຈົບ**

# ໘. ອານາປານັດສະຕິສູດ

## ວ່າດ້ວຍວິທີຈະເລີນອານາປານະສະຕິ

[໑໔໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຜາສາດຂອງມິຄາຣະມາຕາ ໃນບຸບພາຣາມ ເຂດນະຄອນສາວັດຖີ ພ້ອມດ້ວຍພຣະສາວົກຜູ້ເປັນເຖຣະ ມີຊື່ສຽງຫຼາຍອົງນຳກັນ ຄື ທ່ານພຣະສາຣີບຸດ ທ່ານພຣະມະຫາໂມກຄັນລານະ ທ່ານພຣະມະຫາກັດສະປະ ທ່ານພຣະມະຫາກັດຈາ

ຍະນະ ທ່ານພຣະມະຫາໂກຕະທິຕະ ທ່ານພຣະມະຫາກັບປິນະ ທ່ານພຣະມະຫາຈຸນທະ ທ່ານພຣະອະນຸຣຸດທະ ທ່ານພຣະເຣວະຕະ ທ່ານພຣະອານົນ ແລະ ພຣະສາວົກຜູ້ເປັນເຖຣະທີ່ມີຊື່ສຽງອົງອື່ນ ໆ ກໍສະໄໝນັ້ນ ພຣະເຖຣະທັງຫຼາຍສັ່ງສອນ ພໍ່າສອນ໌ພິກຂຸໃໝ່ທັງຫຼາຍ ຄື

ພິກຂຸຜູ້ເປັນເຖຣະລາງພວກສັ່ງສອນ ພໍ່າສອນພິກຂຸ ໑໐ ອົງແດ່ ລາງພວກສັ່ງສອນ ພໍ່າສອນພິກຂຸ ໒໐ ອົງແດ່ ລາງພວກສັ່ງສອນ ພໍ່າສອນພິກຂຸ ໓໐ ອົງແດ່ ລາງພວກສັ່ງສອນ ພໍ່າສອນພິກຂຸ ໔໐ ອົງແດ່ ຝ່າຍພິກຂຸໃໝ່ເຫຼົ່ານັ້ນ ຜູ້ອັນພິກຂຸຜູ້ເປັນເຖຣະສັ່ງສອນ ພໍ່າສອນຢູ່ຍ່ອມຮູ້ແຈ້ງທໍາວິເສດຢ່າງກວ້າງຂວາງກວ່າທີ່ຕົນຮູ້ມາກ່ອນ

[໑໔໕] ກໍສະໄໝນັ້ນ ໃນມື້ອຸໂປສົດຂຶ້ນ ໑໕ ຄໍ່າ ຄືນດວງຈັນເຕັມດວງ ໃນມື້ປະວາຣະນາ ພຣະຜູ້ມີພຣະພາກເຈົ້າຊົງມີພິກຂຸສົງຮ້ອມລ້ອມ ປະທັບນັ່ງຢູ່ກາງແຈ້ງ ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າຊົງກວດເບິ່ງພິກຂຸສົງ ເຊິ່ງມິດງຽບຢູ່ ຈຶ່ງໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ

"ພິກຂຸທັງຫຼາຍ ເຮົາຍິນດີປະຕິປະທານີ້ ເຮົາມີໃຈຍິນດີປະຕິປະທານີ້ ຍ້ອນເຫດນັ້ນທ່ານທັງຫຼາຍໃນທໍາວິໄນນີ້ຈົ່ງຜາຣົບຄວາມພຽນ[?]ເພື່ອເຖິງທໍາທີ່ຕົນຍັງບໍ່ເຖິງ໌ ເພື່ອບັນລຸທໍາທີ່ຕົນຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທໍາທີ່ຕົນຍັງບໍ່ເຮັດໃຫ້ແຈ້ງໃຫ້ຍິ່ງ ໆ ຂຶ້ນໄປເທີ້ນ ເຮົາຈັກອຢູ່ໃນນະຄອນສາວັດຖີນີ້ແລ ຈົນເຖິງມື້ຄົບ ໔ ເດືອນແຫ່ງລະດູຝົນ ອັນເປັນເດືອນທີ່ມີດອກໂກມຸດ"

ພິກຂຸຊາວຊົນນະບົດໄດ້ຟັງຂ່າວວ່າ "ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າຈັກຊົງ ຢູ່ໃນນະຄອນສາວັດຖີນັ້ນ ຈົນເຖິງມື້ຄົບ ໔ ເດືອນແຫ່ງລະດູຝົນ ອັນເປັນເດືອນທີ່ມີດອກໂກມຸດ" ຈຶ່ງພາກັນຫຼັ່ງໄຫຼມາຍັງນະຄອນສາວັດຖີ ເພື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ

ຝ່າຍພິກຂຸຜູ້ເປັນເຖຣະເຫຼົ່ານັ້ນກໍພາກັນສັ່ງສອນ ພໍ່າສອນພິກຂຸໃໝ່ເພີ່ມປະມານຫຼາຍຂຶ້ນ ຄື ພິກຂຸຜູ້ເປັນເຖຣະລາງພວກສັ່ງສອນ ພໍ່າສອນພິກຂຸ ໑໐ ອົງແດ່ ລາງພວກສັ່ງສອນ ພໍ່າສອນພິກຂຸ ໒໐ ອົງແດ່ ລາງພວກສັ່ງສອນ ພໍ່າສອນພິກຂຸ ໓໐ ອົງແດ່ ລາງພວກສັ່ງສອນ ພໍ່າສອນພິກຂຸ ໔໐ ອົງແດ່ ຝ່າຍພິກຂຸໃໝ່ເຫຼົ່ານັ້ນ ຜູ້ອັນພິກຂຸຜູ້ເປັນເຖຣະສັ່ງສອນ ພໍ່າສອນຢູ່ ຍ່ອມຮູ້ແຈ້ງທໍາວິເສດຢ່າງກວ້າງຂວາງກວ່າທີ່ຕົນຮູ້ມາກ່ອນ

[໑໔໖] ກໍສະໄໝນັ້ນ ໃນມື້ອຸໂປສົດຂຶ້ນ ໑໕ ຄໍ່າ ຄືນດວງຈັນເຕັມດວງ ອັນເປັນມື້ຄົບ ໔ ເດືອນແຫ່ງລະດູຝົນ ເປັນເດືອນທີ່ມີດອກໂກມຸດ ພຣະຜູ້ມີພຣະພາກເຈົ້າຊົງມີພິກຂຸສົງຮ້ອມລ້ອມ ປະທັບນັ່ງຢູ່ກາງແຈ້ງ ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າຊົງກວດເບິ່ງພິກຂຸສົງ ເຊິ່ງມິດງຽບຢູ່ ຈຶ່ງໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ

"ພິກຂຸທັງຫຼາຍ ບໍລິສັດນີ້ບໍ່ສົນທະນາກັນ ບໍລິສັດນີ້ງຽບສຽງສົນທະນາກັນ ດໍາລົງຢູ່ໃນສາ

ຣະທຳອັນບໍລິສຸດ ພິກຂຸສົງບໍລິສັດນີ້ເປັນເຊັ່ນດຽວກັນກັບບໍລິສັດທີ່ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາທານ ຄວນແກ່ການທຳອັນຊະລີ ເປັນເນື້ອນາບຸນອັນປະເສີດຂອງໂລກ ພິກຂຸສົງນີ້ເປັນເຊັ່ນດຽວກັນກັບບໍລິສັດທີ່ເຂົາຖວາຍຂອງໜ້ອຍແຕ່ມີຜົນຫຼາຍ ແລະຖວາຍຂອງຫຼາຍກໍ່ຍິ່ງມີຜົນຫຼາຍຂຶ້ນ ພິກຂຸສົງນີ້ເປັນເຊັ່ນດຽວກັນກັບບໍລິສັດທີ່ຊາວໂລກຍາກຈະໄດ້ພົບເຫັນ ພິກຂຸສົງນີ້ເປັນເຊັ່ນດຽວກັນກັບບໍລິສັດ ທີ່ແມ່ນຄົນຜູ້ເອົາສະບຽງຄ້ອງບ່າຄວນເດີນທາງໄປເປັນໂຍດ ໆ ເພື່ອພົບເຫັນ

[໑໔໗] ພິກຂຸທັງຫຼາຍ ໃນພິກຂຸສົງນີ້ ມີພິກຂຸຜູ້ເປັນອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ[໑] ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ[໒] ລຸດພົ້ນແລ້ວຍ້ອນຮູ້ໂດຍຖືກຕ້ອງ ໃນພິກຂຸສົງນີ້ກໍ່ມີພິກຂຸແມ່ນເຊັ່ນນັ້ນຢູ່

ໃນພິກຂຸສົງນີ້ ມີພິກຂຸຜູ້ເປັນອະນາຄາມີ ຍ້ອນສິ້ນໂອຣຳພາຄິຍະສັງໂຍດ[໓] ໕ ຈະເກີດເປັນໂອປະປາຕິກະ[໔] ຈະປະຣິນິບພານໃນໂລກນັ້ນ ໆ ບໍ່ກັບມາຈາກໂລກນັ້ນອີກເປັນທຳມະດາ ໃນພິກຂຸສົງນີ້ກໍ່ມີພິກຂຸແມ່ນເຊັ່ນນັ້ນຢູ່

ໃນພິກຂຸສົງນີ້ ມີພິກຂຸຜູ້ເປັນສະກະທາຄາມີ ຍ້ອນສິ້ນສັງໂຍດ[໑] ໓ ແລະຍ້ອນເຮັດຣາຄະໂທສະ ໂມຫະ ໃຫ້ເບົາບາງ ຈະກັບມາຍັງໂລກນີ້ພຽງເທື່ອດຽວທໍ່ນັ້ນ ແລ້ວເຮັດທີ່ສຸດແຫ່ງທຸກໄດ້ ໃນພິກຂຸສົງນີ້ກໍ່ມີພິກຂຸແມ່ນເຊັ່ນນັ້ນຢູ່

ໃນພິກຂຸສົງນີ້ ມີພິກຂຸຜູ້ເປັນໂສດາບັນ[໒] ຍ້ອນສິ້ນສັງໂຍດ ໓ ບໍ່ມີທາງຕົກຕ່ຳ[໓] ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິ[໔]ໃນມື້ຂ້າງໜ້າ ໃນພິກຂຸສົງນີ້ກໍ່ມີພິກຂຸແມ່ນເຊັ່ນນັ້ນຢູ່

ໃນພິກຂຸສົງນີ້ ມີພິກຂຸຜູ້ພ່ຳເພັງຄວາມພຽນໃນການຈະເລີນສະຕິປັດຖານ ໔ ຢູ່ ໃນພິກຂຸສົງນີ້ກໍ່ມີພິກຂຸແມ່ນເຊັ່ນນັ້ນຢູ່

ໃນພິກຂຸສົງນີ້ ມີພິກຂຸຜູ້ພ່ຳເພັງຄວາມພຽນໃນການຈະເລີນສຳມັບປະທານ ໔ ຢູ່ ໃນພິກຂຸສົງນີ້ກໍ່ມີພິກຂຸແມ່ນເຊັ່ນນັ້ນຢູ່

ໃນພິກຂຸສົງນີ້ ມີພິກຂຸຜູ້ພ່ຳເພັງຄວາມພຽນໃນການຈະເລີນອິດທິບາດ ໔ ຢູ່ ໃນພິກຂຸສົງນີ້ກໍ່ມີພິກຂຸເຊັ່ນນັ້ນຢູ່

ໃນພິກຂຸສົງນີ້ ມີພິກຂຸຜູ້ພ່ຳເພັງຄວາມພຽນໃນການຈະເລີນອິນຊີ ໕ ຢູ່ ຯລຯ ຈະເລີນພະລະ ໕ ຢູ່ ຯລຯ ຈະເລີນໂພດຊົງ ໗ ຢູ່ ຯລຯ ມີພິກຂຸຜູ້ພ່ຳເພັງຄວາມພຽນ

ໃນການຈະເລີນມັກນ້ອຍ ໗ ຢູ່ ໃນພິກຂຸສົງນີ້ກໍມີພິກຂຸແມ່ນເຊັ່ນນັ້ນຢູ່

ໃນພິກຂຸສົງນີ້ ມີພິກຂຸຜູ້ພໍ່າເພັງຄວາມພຽນໃນການຈະເລີນເມດຕາຢູ່ ໃນພິກຂຸສົງນີ້ກໍມີພິກຂຸແມ່ນເຊັ່ນນັ້ນຢູ່ ຯລຯ ມີພິກຂຸຜູ້ພໍ່າເພັງຄວາມພຽນໃນການຈະເລີນກະລຸນາຢູ່ ຯລຯ ມີພິກຂຸຜູ້ພໍ່າເພັງຄວາມພຽນໃນການຈະເລີນມຸທິຕາຢູ່ ຯລຯ ມີພິກຂຸຜູ້ພໍ່າເພັງຄວາມພຽນໃນການຈະເລີນອຸເປກຂາຢູ່ ຯລຯ ມີພິກຂຸຜູ້ພໍ່າເພັງຄວາມພຽນໃນການຈະເລີນອະສຸພະສັນຍາຢູ່ ຯລຯ ມີພິກຂຸຜູ້ພໍ່າເພັງຄວາມພຽນໃນການຈະເລີນອະນິຈຈະສັນຍາຢູ່ ໃນພິກຂຸສົງນີ້ກໍມີພິກຂຸແມ່ນເຊັ່ນນັ້ນຢູ່

ພິກຂຸທັງຫຼາຍ ໃນພິກຂຸສົງນີ້ ມີພິກຂຸຜູ້ພໍ່າເພັງຄວາມພຽນໃນການຈະເລີນອານາປານະສະຕິຢູ່ ອານາປານະສະຕິທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ອານາປານະສະຕິທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດສະຕິປັດຖານ ໔ ໃຫ້ບໍລິບູນ ສະຕິປັດຖານ ໔ ທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດໂພດຊົງ ໗ ໃຫ້ບໍລິບູນ ໂພດຊົງ ໗ ທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດວິດຊາ ແລະ ວິມຸດຕິໃຫ້ບໍລິບູນ

[໑໔໗] ອານາປານະສະຕິທີ່ພິກຂຸຈະເລີນແລ້ວແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

ຄື ພິກຂຸໃນທຳວິໄນນີ້ ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງງກໍດີ ນັ່ງຂັດສະມາທິ໔ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ໓ ມີສະຕິຫັນໃຈເຂົ້າ ມີສະຕິຫັນໃຈອອກ

## ອານາປານະສະຕິ ໑໖ ຂັ້ນ

໑. ເມື່ອຫັນໃຈເຂົ້າຍາວກໍຮູ້ແຈ້ງວ່າ "ເຮົາຫັນໃຈເຂົ້າຍາວ"
ເມື່ອຫັນໃຈອອກຍາວກໍຮູ້ແຈ້ງວ່າ "ເຮົາຫັນໃຈອອກຍາວ"

໔. ເມື່ອຫັນໃຈເຂົ້າສັ້ນກໍຮູ້ແຈ້ງວ່າ "ເຮົາຫັນໃຈເຂົ້າສັ້ນ"
ເມື່ອຫັນໃຈອອກສັ້ນກໍຮູ້ແຈ້ງວ່າ "ເຮົາຫັນໃຈອອກສັ້ນ"

໓. ໃສ່ໃຈວ່າ "ເຮົາກຳນົດຮູ້ກອງລົມທັງປວງ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາກຳນົດຮູ້ກອງລົມທັງປວງ ຫັນໃຈອອກ"

໔. ໃສ່ໃຈວ່າ "ເຮົາລະງັບກາຍສັງຂານ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາລະງັບກາຍສັງຂານ ຫັນໃຈອອກ"

໕. ໃສ່ໃຈວ່າ "ເຮົາກຳນົດຮູ້ປິຕິ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາກຳນົດຮູ້ປິຕິ ຫັນໃຈອອກ"

໖. ໃສ່ໃຈວ່າ "ເຮົາກຳນົດຮູ້ສຸກ ຫັນໃຈເຂົ້າ"

ໃສ່ໃຈວ່າ "ເຮົາກຳນົດຮູ້ສຸກ ຫັນໃຈອອກ"

໗. ໃສ່ໃຈວ່າ "ເຮົາກຳນົດຮູ້ຈິດຕະສັງຂານ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາກຳນົດຮູ້ຈິດຕະສັງຂານ ຫັນໃຈອອກ"

໘. ໃສ່ໃຈວ່າ "ເຮົາລະງັບຈິດຕະສັງຂານ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາລະງັບຈິດຕະສັງຂານ ຫັນໃຈອອກ"

໙. ໃສ່ໃຈວ່າ "ເຮົາກຳນົດຮູ້ຈິດ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາກຳນົດຮູ້ຈິດ ຫັນໃຈອອກ"

໑໐. ໃສ່ໃຈວ່າ "ເຮົາເຮັດຈິດໃຫ້ບັນເທີງ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາເຮັດຈິດໃຫ້ບັນເທີງ ຫັນໃຈອອກ"

໑໑. ໃສ່ໃຈວ່າ "ເຮົາຕັ້ງຈິດໝັ້ນ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາຕັ້ງຈິດໝັ້ນ ຫັນໃຈອອກ"

໑໒. ໃສ່ໃຈວ່າ "ເຮົາປົດຈິດ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາປົດຈິດ ຫັນໃຈອອກ"

໑໓. ໃສ່ໃຈວ່າ "ເຮົາພິຈາລະນາເຫັນວ່າບໍ່ທ່ຽງ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາພິຈາລະນາເຫັນວ່າບໍ່ທ່ຽງ ຫັນໃຈອອກ"

໑໔. ໃສ່ໃຈວ່າ "ເຮົາພິຈາລະນາເຫັນຄວາມຄາຍອອກໄດ້ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາພິຈາລະນາເຫັນຄວາມຄາຍອອກໄດ້ ຫັນໃຈອອກ"

໑໕. ໃສ່ໃຈວ່າ "ເຮົາພິຈາລະນາເຫັນຄວາມດັບໄປ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາພິຈາລະນາເຫັນຄວາມດັບໄປ ຫັນໃຈອອກ"

໑໖. ໃສ່ໃຈວ່າ "ເຮົາພິຈາລະນາເຫັນຄວາມສະລະຄືນ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາພິຈາລະນາເຫັນຄວາມສະລະຄືນ ຫັນໃຈອອກ"

ພິກຂຸທັງຫຼາຍ ອານາປານະສະຕິທີ່ພິກຂຸຈະເລີນແລ້ວແນວນີ້ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

[໑໔໙] ອານາປານະສະຕິທີ່ພິກຂຸຈະເລີນແລ້ວແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງເຮັດໃຫ້ສະຕິປັດຖານ ໔ ບໍລິບູນໄດ້ ຄື

໑. ສະໄໝໃດ ພິກຂຸເມື່ອຫັນໃຈເຂົ້າຍາວກໍຮູ້ແຈ້ງວ່າ "ເຮົາຫັນໃຈເຂົ້າຍາວ"
ເມື່ອຫັນໃຈອອກຍາວກໍຮູ້ແຈ້ງວ່າ "ເຮົາຫັນໃຈອອກຍາວ"
ເມື່ອຫັນໃຈເຂົ້າສັ້ນກໍຮູ້ແຈ້ງວ່າ "ເຮົາຫັນໃຈເຂົ້າສັ້ນ"
ເມື່ອຫັນໃຈອອກສັ້ນກໍຮູ້ແຈ້ງວ່າ "ເຮົາຫັນໃຈອອກສັ້ນ"

ໃສ່ໃຈວ່າ "ເຮົາກຳນົດຮູ້ກອງລົມທັງປວງ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາກຳນົດຮູ້ກອງລົມທັງປວງ ຫັນໃຈອອກ"
ໃສ່ໃຈວ່າ "ເຮົາລະງັບກາຍສັງຂານ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາລະງັບກາຍສັງຂານ ຫັນໃຈອອກ"

ສະໄໝນັ້ນ ພິກຂຸພິຈາລະນາເຫັນກາຍໃນກາຍ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ເຮົາກ່າວລົມຫັນໃຈເຂົ້າ ລົມຫັນໃຈອອກນີ້ວ່າ ເປັນກາຍຊະນິດໜຶ່ງໃນບັນດາກາຍທັງຫຼາຍ ຍ້ອນເຫດນັ້ນ ສະໄໝນັ້ນ ພິກຂຸຈຶ່ງຊື່ວ່າພິຈາລະນາເຫັນກາຍໃນກາຍ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກຢູ່

໘. ສະໄໝໃດພິກຂຸໃສ່ໃຈວ່າ "ເຮົາກຳນົດຮູ້ປີຕິ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາກຳນົດຮູ້ປີຕິ ຫັນໃຈອອກ"
ໃສ່ໃຈວ່າ "ເຮົາກຳນົດຮູ້ສຸກ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາກຳນົດຮູ້ສຸກ ຫັນໃຈອອກ"
ໃສ່ໃຈວ່າ "ເຮົາກຳນົດຮູ້ຈິດຕະສັງຂານ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາກຳນົດຮູ້ຈິດຕະສັງຂານ ຫັນໃຈອອກ"
ໃສ່ໃຈວ່າ "ເຮົາລະງັບຈິດຕະສັງຂານ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາລະງັບຈິດຕະສັງຂານ ຫັນໃຈອອກ"

ສະໄໝນັ້ນ ພິກຂຸພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ເຮົາກ່າວການໃສ່ໃຈລົມຫັນໃຈເຂົ້າ ລົມຫັນໃຈອອກເປັນຢ່າງດີນີ້ວ່າ ເປັນເວທະນາຊະນິດໜຶ່ງໃນບັນດາເວທະນາທັງຫຼາຍ ຍ້ອນເຫດນັ້ນ ສະໄໝນັ້ນ ພິກຂຸຈຶ່ງຊື່ວ່າພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກຢູ່

໙. ສະໄໝໃດ ພິກຂຸໃສ່ໃຈວ່າ "ເຮົາກຳນົດຮູ້ຈິດ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາກຳນົດຮູ້ຈິດ ຫັນໃຈອອກ"
ໃສ່ໃຈວ່າ "ເຮົາເຮັດຈິດໃຫ້ບັນເທີງ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາເຮັດຈິດໃຫ້ບັນເທີງ ຫັນໃຈອອກ"
ໃສ່ໃຈວ່າ "ເຮົາຕັ້ງຈິດໝັ້ນ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາຕັ້ງຈິດໝັ້ນ ຫັນໃຈອອກ"
ໃສ່ໃຈວ່າ "ເຮົາປົດຈິດ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາປົດຈິດ ຫັນໃຈອອກ"

ສະໄໝນັ້ນ ພິກຂຸພິຈາລະນາເຫັນຈິດໃນຈິດ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ເຮົາບໍ່ບອກອານາປານະສະຕິແກ່ພິກຂຸຜູ້ຫຼົງລືມ ບໍ່ມີສຳປະຊັນຍະ ຍ້ອນເຫດນັ້ນ ສະໄໝນັ້ນ ພິກຂຸຈຶ່ງຊື່ວ່າພິຈາລະນາເຫັນຈິດໃນຈິດ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກຢູ່

໔. ສະໄໝໃດ ພິກຂຸໃສ່ໃຈວ່າ "ເຮົາພິຈາລະນາເຫັນວ່າບໍ່ທ່ຽງ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາພິຈາລະນາເຫັນວ່າບໍ່ທ່ຽງ ຫັນໃຈອອກ"
ໃສ່ໃຈວ່າ "ເຮົາພິຈາລະນາເຫັນຄວາມຄາຍອອກໄດ້ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາພິຈາລະນາເຫັນຄວາມຄາຍອອກໄດ້ ຫັນໃຈອອກ"
ໃສ່ໃຈວ່າ "ເຮົາພິຈາລະນາເຫັນຄວາມດັບໄປ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາພິຈາລະນາເຫັນຄວາມດັບໄປ ຫັນໃຈອອກ"
ໃສ່ໃຈວ່າ "ເຮົາພິຈາລະນາເຫັນຄວາມສະລະຄືນ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາພິຈາລະນາເຫັນຄວາມສະລະຄືນ ຫັນໃຈອອກ"

ສະໄໝນັ້ນ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍ ມີຄວາມພຽນ ມີ

ສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ທ່ານເຫັນການລະອະພິດຊາແລະໂທມະນັດດ້ວຍປັນຍາແລ້ວ ຍ່ອມເປັນຜູ້ວາງເສີຍໄດ້ດີ ຍ້ອນເຫດນັ້ນ ສະໄໝນັ້ນ ພິກຂຸຈຶ່ງຊື່ວ່າພິຈາລະນາເຫັນທຳໃນທຳທັງຫຼາຍ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກຢູ່

ພິກຂຸທັງຫຼາຍ ອານາປານະສະຕິທີ່ພິກຂຸຈະເລີນແລ້ວແນວນີ້ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງເຮັດໃຫ້ສະຕິປັດຖານ ໔ ບໍລິບູນໄດ້

## ສະຕິປັດຖານ ໔

[໑໕໐] ສະຕິປັດຖານ ໔ ທີ່ພິກຂຸຈະເລີນແລ້ວແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງເຮັດໃຫ້ໂພດຊົງ ໗ ບໍລິບູນ ຄື

໑. ສະໄໝໃດ ພິກຂຸພິຈາລະນາເຫັນກາຍໃນກາຍ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ສະໄໝນັ້ນ ພິກຂຸນັ້ນ ມີສະຕິຕັ້ງໝັ້ນ ບໍ່ຫຼົງລືມ ສະໄໝໃດ ພິກຂຸມີສະຕິຕັ້ງໝັ້ນ ບໍ່ຫຼົງລືມ ສະໄໝນັ້ນ ສະຕິສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຮູ້ຄືຄວາມຮະນຶກໄດ້) ຍ່ອມເປັນອັນພິກຂຸຜາຣົບແລ້ວ ສະໄໝນັ້ນ ພິກຂຸຊື່ວ່າຈະເລີນສະຕິສຳໂພດຊົງ ສະໄໝນັ້ນ ສະຕິສຳໂພດຊົງຂອງພິກຂຸຍ່ອມເຖິງຄວາມຈະເລີນເຕັມທີ່

໔. ພິກຂຸນັ້ນເປັນຜູ້ມີສະຕິແນວນັ້ນ ຍ່ອມຄົ້ນຄວ້າ ຮິ່ນຕອງ ເຖິງການພິຈາລະນາທຳນັ້ນດ້ວຍປັນຍາ ສະໄໝໃດ ພິກຂຸເປັນຜູ້ມີສະຕິແນວນັ້ນ ຍ່ອມຄົ້ນຄວ້າ ຮິ່ນຕອງ ເຖິງການພິຈາລະນາທຳນັ້ນດ້ວຍປັນຍາ

ສະໄໝນັ້ນ ທຳມະວິຈະຍະສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມຄັດເລືອກທຳ) ຍ່ອມເປັນອັນພິກຂຸຜາຣົບແລ້ວ ສະໄໝນັ້ນ ພິກຂຸຊື່ວ່າຈະເລີນທຳມະວິຈະຍະສຳໂພດຊົງ ສະໄໝນັ້ນ ທຳມະວິຈະຍະສຳໂພດຊົງຂອງພິກຂຸຍ່ອມເຖິງຄວາມຈະເລີນເຕັມທີ່

໓. ພິກຂຸນັ້ນຄົ້ນຄວ້າ ຮິ່ນຕອງ ເຖິງການພິຈາລະນາທຳນັ້ນດ້ວຍປັນຍາ ຜາຣົບຄວາມພຽນບໍ່ຫຍ່ອນຍານ ສະໄໝໃດ ພິກຂຸຄົ້ນຄວ້າ ຮິ່ນຕອງ ເຖິງການພິຈາລະນາທຳນັ້ນດ້ວຍປັນຍາ ຜາຣົບຄວາມພຽນ ບໍ່ຫຍ່ອນຍານ ສະໄໝນັ້ນ ວິຣິຍະສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມພຽນ) ຍ່ອມເປັນອັນພິກຂຸຜາຣົບແລ້ວ ສະໄໝນັ້ນ ພິກຂຸຊື່ວ່າຈະເລີນວິຣິຍະສຳໂພດຊົງ ສະໄໝນັ້ນ ວິຣິຍະສຳໂພດຊົງຂອງພິກຂຸຍ່ອມເຖິງຄວາມຈະເລີນເຕັມທີ່

໔. ສະໄໝໃດ ປີຕິທີ່ປາສະຈາກອາມິດເກີດຂຶ້ນ ແກ່ພິກຂຸຜູ້ຜາຣົບຄວາມພຽນແລ້ວສະໄໝນັ້ນ ປີຕິສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມອີ່ມໃຈ) ຍ່ອມເປັນອັນພິກຂຸຜາຣົບແລ້ວ ສະໄໝນັ້ນ ພິກຂຸຊື່ວ່າຈະເລີນປີຕິສຳໂພດຊົງ ສະໄໝນັ້ນ ປີຕິສຳໂພດຊົງຂອງພິກຂຸຍ່ອມເຖິງຄວາມຈະເລີນເຕັມທີ່

໕. ເມື່ອພິກຂຸມີຈິດເກີດປີຕິ ກາຍແລະຈິດຍ່ອມສະງົບ ສະໄໝໃດ ພິກຂຸມີຈິດເກີດປີຕິ ກາຍແລະຈິດຍ່ອມສະງົບ ສະໄໝນັ້ນ ປັດສັດທິສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມສະງົບກາຍສະງົບຈິດ) ຍ່ອມເປັນອັນພິກຂຸຜາຣົບແລ້ວ ສະໄໝນັ້ນ ພິກຂຸຊື່ວ່າຈະເລີນປັດສັດທິສຳໂພດຊົງ ສະໄໝນັ້ນ ປັດສັດທິສຳໂພດຊົງຂອງພິກຂຸຍ່ອມເຖິງຄວາມຈະເລີນເຕັມທີ່

໖. ເມື່ອພິກຂຸມີກາຍສະງົບແລ້ວ ມີຄວາມສຸກ ຈິດຍ່ອມຕັ້ງໝັ້ນ ສະໄໝໃດ ເມື່ອພິກຂຸມີກາຍສະງົບ ມີຄວາມສຸກ ຈິດຍ່ອມຕັ້ງໝັ້ນ ສະໄໝນັ້ນ ສະມາທິສຳໂພດຊົງ(ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມຕັ້ງໃຈໝັ້ນ) ຍ່ອມເປັນອັນພິກຂຸຜາຣົບແລ້ວ ສະໄໝນັ້ນ ພິກຂຸຊື່ວ່າຈະເລີນສະມາທິສຳໂພດຊົງ ສະໄໝນັ້ນ ສະມາທິສຳໂພດຊົງຂອງພິກຂຸຍ່ອມເຖິງຄວາມຈະເລີນເຕັມທີ່

໗. ພິກຂຸນັ້ນ ເປັນຜູ້ວາງເສີຍຈິດທີ່ຕັ້ງໝັ້ນແລ້ວເຊັ່ນນັ້ນໄດ້ເປັນຢ່າງດີ ສະໄໝໃດ ພິກຂຸເປັນຜູ້ວາງເສີຍຈິດທີ່ຕັ້ງໝັ້ນແລ້ວເຊັ່ນນັ້ນໄດ້ເປັນຢ່າງດີ ສະໄໝນັ້ນ ອຸເປກຂາສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມມີໃຈເປັນກາງ) ຍ່ອມເປັນອັນພິກຂຸຜາຣົບແລ້ວ ສະໄໝນັ້ນ ພິກຂຸຊື່ວ່າຈະເລີນອຸເປກຂາສຳໂພດຊົງ ສະໄໝນັ້ນ ອຸເປກຂາສຳໂພດຊົງຂອງພິກຂຸຍ່ອມເຖິງຄວາມຈະເລີນເຕັມທີ່

[໑໕໑] ພິກຂຸທັງຫຼາຍ

໑. ສະໄໝໃດ ພິກຂຸພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ ພິຈາລະນາເຫັນຈິດໃນຈິດ ຯລຯ ພິຈາລະນາເຫັນທຳໃນທຳທັງຫຼາຍ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ສະໄໝນັ້ນ ພິກຂຸນັ້ນມີສະຕິຕັ້ງໝັ້ນ ບໍ່ຫຼົງລືມ ສະໄໝໃດ ພິກຂຸມີສະຕິຕັ້ງໝັ້ນ ບໍ່ຫຼົງລືມ ສະໄໝນັ້ນ ສະຕິສຳໂພດຊົງຍ່ອມເປັນອັນພິກຂຸຜາຣົບແລ້ວ ສະໄໝນັ້ນ ພິກຂຸຊື່ວ່າຈະເລີນສະຕິສຳໂພດຊົງ ສະໄໝນັ້ນ ສະຕິສຳໂພດຊົງຂອງພິກຂຸຍ່ອມເຖິງຄວາມຈະເລີນເຕັມທີ່

໒. ພິກຂຸນັ້ນເປັນຜູ້ມີສະຕິແນວນັ້ນ ຍ່ອມຄົ້ນຄວ້າ ຮີ່ນຕອງ ເຖິງການພິຈາລະນາທຳນັ້ນດ້ວຍປັນຍາ ສະໄໝໃດ ພິກຂຸເປັນຜູ້ມີສະຕິແນວນັ້ນຢູ່ ຍ່ອມຄົ້ນຄວ້າ ຮີ່ນຕອງ ເຖິງການພິຈາລະນາທຳນັ້ນດ້ວຍປັນຍາ ສະໄໝນັ້ນ ທຳມະວິຈະຍະສຳໂພດຊົງຍ່ອມເປັນອັນພິກຂຸຜາຣົບແລ້ວ ສະໄໝນັ້ນ ພິກຂຸຊື່ວ່າຈະເລີນທຳມະວິຈະຍະສຳໂພດຊົງ ສະໄໝນັ້ນ ທຳມະວິຈະຍະສຳໂພດຊົງຂອງພິກຂຸຍ່ອມເຖິງຄວາມຈະເລີນເຕັມທີ່

໓. ພິກຂຸນັ້ນຄົ້ນຄວ້າ ຮີ່ນຕອງ ເຖິງການພິຈາລະນາທຳນັ້ນດ້ວຍປັນຍາ ເປັນອັນຜາຣົບຄວາມພຽນບໍ່ຫຍ່ອນຍານແລ້ວ ສະໄໝໃດ ພິກຂຸຍ່ອມຄົ້ນຄວ້າ ຮີ່ນຕອງ ເຖິງການພິຈາລະນາທຳນັ້ນດ້ວຍປັນຍາຜາຣົບຄວາມພຽນບໍ່ຫຍ່ອນຍານ ສະໄໝນັ້ນ ວິຣິຍະສຳໂພດຊົງຍ່ອມເປັນອັນພິກຂຸຜາຣົບແລ້ວ ສະໄໝນັ້ນ ພິກຂຸຊື່ວ່າຈະເລີນວິຣິຍະສຳໂພດຊົງ ສະໄໝນັ້ນ ວິຣິຍະສຳໂພຊ ງົດຄົ໌ກອົງພິກຂຸຍ່ອມເຖິງຄວາມຈະເລີນເຕັມທີ່

໔. ປີຕິອັນປາສະຈາກອາມິດ ເກີດຂຶ້ນແກ່ພິກຂຸຜູ້ຜາຣົບຄວາມພຽນແລ້ວ ສະໄໝໃດ ປີຕິອັນປາສະຈາກອາມິດເກີດຂຶ້ນແກ່ພິກຂຸຜູ້ຜາຣົບຄວາມພຽນແລ້ວ ສະໄໝນັ້ນ ປີຕິສຳໂພດຊົງຍ່ອມເປັນອັນພິກຂຸຜາຣົບແລ້ວ ສະໄໝນັ້ນ ພິກຂຸຊື່ວ່າຈະເລີນປີຕິສຳໂພດຊົງ ສະໄໝນັ້ນ ປີຕິສຳໂພດຊົງຂອງພິກຂຸຍ່ອມເຖິງຄວາມຈະເລີນເຕັມທີ່

໕. ເມື່ອພິກຂຸມີຈິດເກີດປີຕິ ກາຍແລະຈິດຍ່ອມສະງົບ ສະໄໝໃດ ເມື່ອພິກຂຸມີຈິດເກີດປີຕິ ກາຍແລະຈິດຍ່ອມສະງົບ ສະໄໝນັ້ນ ປັດສັດທິສຳໂພດຊົງຍ່ອມເປັນອັນພິກຂຸຜາຣົບແລ້ວ ສະໄໝນັ້ນ ພິກຂຸຊື່ວ່າຈະເລີນປັດສັດທິ- ສຳໂພດຊົງ ສະໄໝນັ້ນ ປັດສັດທິສຳໂພດຊົງຂອງພິກຂຸຍ່ອມເຖິງຄວາມຈະເລີນເຕັມທີ່

໖. ເມື່ອພິກຂຸຜູ້ມີກາຍສະງົບແລ້ວ ມີຄວາມສຸກ ຈິດຍ່ອມຕັ້ງໝັ້ນ ສະໄໝໃດ ເມື່ອພິກຂຸຜູ້ມີກາຍສະງົບແລ້ວ ມີຄວາມສຸກ ຈິດຍ່ອມຕັ້ງໝັ້ນ ສະໄໝນັ້ນ ສະມາທິສຳໂພດຊົງຍ່ອມເປັນອັນພິກຂຸຜາຣົບແລ້ວ ສະໄໝນັ້ນ ພິກຂຸຊື່ວ່າຈະເລີນສະມາທິສຳໂພດຊົງ ສະໄໝນັ້ນ ສະມາທິສຳ

ໂພດຊົງຂອງພິກຂຸຍ່ອມເຖິງຄວາມຈະເລີນເຕັມທີ່

໗. ພິກຂຸນັ້ນເປັນຜູ້ວາງເສີຍຈິດທີ່ຕັ້ງໝັ້ນແລ້ວເຊັ່ນນັ້ນໄດ້ຢ່າງດີ ສະໄໝໃດ ພິກຂຸເປັນຜູ້ວາງເສີຍຈິດທີ່ຕັ້ງໝັ້ນແລ້ວເຊັ່ນນັ້ນໄດ້ຢ່າງດີ ສະໄໝນັ້ນ

ອຸເປກຂາສຳໂພດຊົງຍ່ອມເປັນອັນພິກຂຸຜາຣົບແລ້ວ ສະໄໝນັ້ນ ພິກຂຸຊື່ວ່າຈະເລີນອຸເປກຂາສຳໂພດຊົງ ສະໄໝນັ້ນ ອຸເປກຂາສຳໂພດຊົງຂອງພິກຂຸຍ່ອມເຖິງຄວາມຈະເລີນເຕັມທີ່

ພິກຂຸທັງຫຼາຍ ສະຕິປັດຖານ ໔ ທີ່ພິກຂຸຈະເລີນແລ້ວແນວນີ້ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງເຮັດໃຫ້ໂພດຊົງ ໗ ບໍລິບູນ

## ໂພດຊົງ ໗

[໑໕໘] ໂພດຊົງ ໗ ທີ່ພິກຂຸຈະເລີນແລ້ວແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງເຮັດໃຫ້ວິດຊາແລະວິມຸດຕິບໍລິບູນ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງ ອັນອາໄສວິເວກ (ຄວາມສະຫງັດ) ອາໄສວິຣາຄະ (ຄວາມຄາຍກຳໜັດ) ອາໄສນິໂຣທ (ຄວາມດັບ) ອັນນ້ອມໄປເພື່ອຄວາມປ່ອຍວາງ
໒. ຈະເລີນທຳມະວິຈະຍະສຳໂພດຊົງ ຯລຯ
໓. ຈະເລີນວິຣິຍະສຳໂພດຊົງ ຯລຯ
໔. ຈະເລີນປີຕິສຳໂພດຊົງ ຯລຯ
໕. ຈະເລີນປັດສັດທິສຳໂພດຊົງ ຯລຯ
໖. ຈະເລີນສະມາທິສຳໂພດຊົງ ຯລຯ
໗. ຈະເລີນອຸເປກຂາສຳໂພດຊົງ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣທ ອັນນ້ອມໄປເພື່ອຄວາມປ່ອຍວາງ

ພິກຂຸທັງຫຼາຍ ໂພດຊົງ ໗ ທີ່ພິກຂຸຈະເລີນແລ້ວແນວນີ້ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງເຮັດໃຫ້ວິດຊາແລະວິມຸດຕິບໍລິບູນ”

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ອານາປານັດສະຕິສູດທີ ໘ ຈົບ**

# ໗. ກາຍະຄະຕາສະຕິສູດ

## ວ່າດ້ວຍວິທີຈະເລີນກາຍະຄະຕາສະຕິ

[໑໕໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ພິກຂຸຫຼາຍຮູບກັບຈາກບິນທະບາດ ພາຍຫຼັງສັນພັດຕາຫານສຳເລັດແລ້ວ ນັ່ງປະຊຸມກັນໃນຫໍສັນ ໄດ້ເກີດການສົນທະນາກັນຂຶ້ນໃນລະຫວ່າງການປະຊຸມວ່າ

"ທ່ານຜູ້ມີອາຍຸທັງຫຼາຍ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດກາຍະຄະຕາສະຕິທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວວ່າ ມີຜົນຫຼາຍ ມີອານິສົງຫຼາຍ"

ເລື້ອງນີ້ມີພຽງທ່ານີ້ທີ່ພິກຂຸເຫຼົ່ານັ້ນສົນທະນາກັນຄ້າງໄວ້ ເມື່ອເວລາແລງ ພຣະຜູ້ມີພຣະພາກເຈົ້າຊົງອອກຈາກທີ່ຊົງຫຼີບຫຼີກ ສະເດັດເຂົ້າໄປສູ່ຫໍສັນ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ ເວລານີ້ ທ່ານທັງຫຼາຍນັ່ງສົນທະນາກັນດ້ວຍເລື້ອງອັນໃດ ເວົ້າເລື້ອງອັນໃດຄ້າງໄວ້"

ພິກຂຸເຫຼົ່ານັ້ນຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານອະໄຣກາດ ຂ້າພຣະອົງທັງຫຼາຍກັບຈາກບິນທະບາດ ພາຍຫຼັງສັນພັດຕາຫານສຳເລັດແລ້ວ ນັ່ງປະຊຸມກັນໃນຫໍສັນ ໄດ້ເກີດການສົນທະນາກັນຂຶ້ນໃນລະຫວ່າງການປະຊຸມວ່າ "ທ່ານຜູ້ມີອາຍຸທັງຫຼາຍ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດກາຍະຄະຕາສະຕິທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວວ່າ ມີຜົນຫຼາຍ ມີອານິສົງຫຼາຍ"

ຂ້າແດ່ ພຣະອົງຜູ້ຈະເລີນ ເລື້ອງນີ້ທີ່ຂ້າພຣະອົງທັງຫຼາຍໄດ້ເວົ້າຄ້າງໄວ້ ກໍພໍດີພຣະຜູ້ມີພຣະພາກເຈົ້າສະເດັດມາເຖິງ ຂ້ານ້ອຍ"

[໑໕໔] ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

"ກາຍະຄະຕາສະຕິທີ່ພິກຂຸຈະເລີນແລ້ວແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງມີຜົນ

ຫຼາຍ ມີອານິສົງຫຼາຍ ຄື ພິກຂຸໃນທຳວິໄນນີ້ ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ນັ່ງຂັດສະມາທິ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ມີສະຕິຫັນໃຈເຂົ້າ ມີສະຕິຫັນໃຈອອກ

ເມື່ອຫັນໃຈເຂົ້າຍາວ ກໍຮູ້ແຈ້ງວ່າ "ເຮົາຫັນໃຈເຂົ້າຍາວ"
ເມື່ອຫັນໃຈອອກຍາວ ກໍຮູ້ແຈ້ງວ່າ "ເຮົາຫັນໃຈອອກຍາວ"
ເມື່ອຫັນໃຈເຂົ້າສັ້ນ ກໍຮູ້ແຈ້ງວ່າ "ເຮົາຫັນໃຈເຂົ້າສັ້ນ"
ເມື່ອຫັນໃຈອອກສັ້ນ ກໍຮູ້ແຈ້ງວ່າ "ເຮົາຫັນໃຈອອກສັ້ນ
ໃສ່ໃຈວ່າ "ເຮົາກຳນົດຮູ້ກອງລົມທັງປວງ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາກຳນົດຮູ້ກອງລົມທັງປວງ ຫັນໃຈອອກ"
ໃສ່ໃຈວ່າ "ເຮົາລະງັບກາຍສັງຂານ໑ ຫັນໃຈເຂົ້າ"
ໃສ່ໃຈວ່າ "ເຮົາລະງັບກາຍສັງຂານ ຫັນໃຈອອກ"໔

ພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ແນວນີ້ ຍ່ອມລະຄວາມດຳຣິທີ່ສັບສົນ ອັນອາໄສເຮືອນລໄດ້ ຍ້ອນລະຄວາມດຳຣິທີ່ສັບສົນນັ້ນໄດ້ ຈິດອັນເປັນໄປພາຍໃນກາຍນັ້ນທີ່ນັ້ນ ຍ່ອມດຳລົງຄືເກົ່າ ເປັນທຳເອກຜຸດຂຶ້ນ ຕັ້ງໝັ້ນ ພິກຂຸຊື່ວ່າຈະເລີນກາຍະຄະຕາສະຕິແມ່ນດ້ວຍອາການແນວນີ້ (໑)

ອີກປະການໜຶ່ງ ພິກຂຸເມື່ອຍ່າງ ກໍຮູ້ແຈ້ງວ່າ "ເຮົາຍ່າງ"
ເມື່ອຢືນ ກໍຮູ້ແຈ້ງວ່າ "ເຮົາຢືນ"
ເມື່ອນັ່ງ ກໍຮູ້ແຈ້ງວ່າ "ເຮົານັ່ງ"
ເມື່ອນອນ ກໍຮູ້ແຈ້ງວ່າ "ເຮົານອນ"

ທ່ານດຳລົງກາຍຢູ່ໂດຍອິລິຍາບົດໃດ ໆ ກໍຮູ້ແຈ້ງກາຍທີ່ດຳລົງຢູ່ໂດຍອິລິຍາບົດນັ້ນ ໆ

ພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ແນວນີ້ ຍ່ອມລະຄວາມດຳຣິທີ່ສັບສົນ ອັນອາໄສເຮືອນໄດ້ ຍ້ອນລະຄວາມດຳຣິທີ່ສັບສົນນັ້ນໄດ້ ຈິດທີ່ເປັນໄປພາຍໃນກາຍທີ່ນັ້ນ ຍ່ອມດຳລົງຄືເກົ່າ ເປັນທຳເອກຜຸດຂຶ້ນ ຕັ້ງໝັ້ນ ພິ□ກສຸຊື່ວ່າຈະເລີນກາຍະຄະຕາສະຕິແມ່ນດ້ວຍອາການແນວນີ້ (໔)

ອີກປະການໜຶ່ງ ພິກຂຸທຳຄວາມຮູ້ສຶກໂຕໃນການກ້າວໄປ ການຖອຍກັບ ທຳຄວາມຮູ້ສຶກໂຕໃນການແນມເບິ່ງ ການຫຼຽວເບິ່ງ

ທຳຄວາມຮູ້ສຶກໂຕໃນການ ຄູ້ເຂົ້າ ການຢຽດອອກ
ທຳຄວາມຮູ້ສຶກໂຕໃນການ ຄອງສັງຄາຕິ ບາດແລະຈີວອນ

ທຳຄວາມຮູ້ສຶກໂຕໃນການ ສັບ ການດື່ມ ການຫຍ້ຳ

ທຳຄວາມຮູ້ສຶກໂຕໃນການ ຖ່າຍອຸດຈາຣະປັດສາວະ

ທຳຄວາມຮູ້ສຶກໂຕໃນການຍ່າງ ການຢືນ ການນັ່ງ ການນອນ ການຕື່ນ ການເວົ້າ ການນິ່ງ

ພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ແນວນີ້ ຍ່ອມລະຄວາມດຳຣິທີ່ສັບສົນອັນອາໄສເຮືອນໄດ້ ຍ້ອນລະຄວາມດຳຣິທີ່ສັບສົນນັ້ນໄດ້ ຈິດທີ່ເປັນໄປພາຍໃນກາຍທໍ່ນັ້ນຍ່ອມດຳລົງຄືເກົ່າ ເປັນທຳເອກຜຸດຂຶ້ນ ຕັ້ງໝັ້ນ ພິກຂຸຊື່ວ່າຈະເລີນກາຍະຄະຕາສະຕິແມ່ນດ້ວຍອາການແນວນີ້ (໓)

ອີກປະການໜຶ່ງ ພິກຂຸພິຈາລະນາເຫັນກາຍນີ້ ຕັ້ງແຕ່ຝ່າຕີນຂຶ້ນໄປເບື້ອງເທິງ ຕັ້ງແຕ່ປາຍຜົມລົງມາເບື້ອງລ່າງ ມີໜັງຫຸ້ມຢູ່ໂດຍຮອບ ເຕັມໄປດ້ວຍສິ່ງທີ່ບໍ່ສະອາດຊະນິດຕ່າງ ໆ ວ່າ "ໃນກາຍນີ້ ມີຜົມ ຂົນ ເລັບ ແຂ້ວ ໜັງ ຊີ້ນ ເອັນ ກະດູກ ເຍື່ອໃນກະດູກ ໄຕ໑ ຫົວໃຈ ຕັບ ພັງຜືດ ມ້າມ ປອດ ໄສ້ໃຫຍ່ ໄສ້ນ້ອຍ ອາຫານໃໝ່ ອາຫານເກົ່າ ບີ ຂີ້ກະເທີ່ໜອງ ເລືອດ ເຫື່ອ ມັນຂຸ້ນ ນ້ຳຕາ ນ້ຳມັນ ນ້ຳລາຍ ນ້ຳມູກ ໄຂຂໍ້ ມູດ"

ພິກຂຸທັງຫຼາຍ ຖົງມີປາກ ໒ ຂ້າງ ເຕັມໄປດ້ວຍທັນພືດຊະນິດຕ່າງ ໆ ຄື ເຂົ້າວິດ ເຂົ້າເປືອກ ຖົ່ວຂຽວ ຖົ່ວເຫຼືອງ ເມັດງາ ເຂົ້າສານ ຄົນຕາດີເປີດຖົງນັ້ນອອກພິຈາລະນາເຫັນວ່າ "ນີ້ເປັນເຂົ້າວິດ ນີ້ເປັນເຂົ້າເປືອກ ນີ້ເປັນຖົ່ວຂຽວ ນີ້ເປັນຖົ່ວເຫຼືອງ ນີ້ເປັນງາ ນີ້ເປັນເຂົ້າສານ" ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ພິຈາລະນາເຫັນກາຍນີ້ຕັ້ງແຕ່ຝ່າຕີນຂຶ້ນໄປເບື້ອງເທິງ ຕັ້ງແຕ່ປາຍຜົມລົງມາເບື້ອງລ່າງ ມີໜັງຫຸ້ມຢູ່ໂດຍຮອບ ເຕັມໄປດ້ວຍສິ່ງທີ່ບໍ່ສະອາດຊະນິດຕ່າງ ໆ ວ່າ "ໃນກາຍນີ້ ມີຜົມ ຂົນ ເລັບ ແຂ້ວ ໜັງ ຊີ້ນ ເອັນ ກະດູກ ເຍື່ອໃນກະດູກ ໄຕ ຫົວໃຈ ຕັບ ພັງຜືດ ມ້າມ ປອດ ໃສ້ໃຫຍ່ ໃສ້ນ້ອຍ ອາຫານໃໝ່ ອາຫານເກົ່າ ບີ ຂີ້ກະເທີ່ໜອງ ເລືອດ ເຫື່ອ ມັນຂຸ້ນ ນ້ຳຕາ ນ້ຳມັນ ນ້ຳລາຍ ນ້ຳມູກ ໄຂຂໍ້ ມູດ"

ພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ແນວນີ້ ຍ່ອມລະຄວາມດຳຣິທີ່ສັບສົນ ອັນອາໄສເຮືອນໄດ້ ຍ້ອນລະຄວາມດຳຣິທີ່ສັບສົນນັ້ນໄດ້ ຈິດທີ່ເປັນໄປພາຍໃນກາຍທໍ່ນັ້ນ ຍ່ອມດຳລົງຄືເກົ່າ ເປັນທຳເອກຜຸດຂຶ້ນ ຕັ້ງໝັ້ນ ພິກຂຸຊື່ວ່າຈະເລີນກາຍະຄະຕາສະຕິແມ່ນດ້ວຍອາການແນວນີ້ (໔)

ອີກປະການໜຶ່ງ ພິກຂຸພິຈາລະນາເຫັນກາຍນີ້ ຕາມທີ່ຕັ້ງຢູ່ ຕາມທີ່ດຳລົງຢູ່ ໂດຍຄວາມເປັນທາດວ່າ "ໃນກາຍນີ້ ມີທາດດິນ ທາດນ້ຳ ທາດໄຟ ທາດລົມຢູ່" ຄົນຂ້າງົວ ຫຼື ລູກມືຂອງຄົນຂ້າງົວຜູ້ຊ່ຽວຊານ ຂ້າງົວແລ້ວແບ່ງອະໄວຍະວະອອກເປັນສ່ວນ ໆ ນັ່ງຢູ່ທີ່ທົນທາງໃຫຍ່ສີ່ແຍກ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ພິຈາລະນາເຫັນກາຍນີ້ ຕາມທີ່ຕັ້ງຢູ່ ຕາມທີ່ດຳລົງຢູ່ ໂດຍຄວາມເປັນທາດວ່າ "ໃນກາຍນີ້ ມີທາດດິນ ທາດນ້ຳ ທາດໄຟ ທາດລົມຢູ່"

ພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ແບບນີ້ ຍ່ອມລະຄວາມດຳຣິທີ່ສັບສົນ ອັນອາໄສເຮືອນໄດ້ ຍ້ອນລະຄວາມດຳຣິທີ່ສັບສົນນັ້ນໄດ້ ຈິດທີ່ເປັນໄປພາຍໃນກາຍທີ່ນັ້ນ ຍ່ອມດຳລົງຄືເກົ່າ ເປັນທຳເອກຜຸດຂຶ້ນ ຕັ້ງໝັ້ນ ພິກຂຸຊື່ວ່າ ຈະເລີນກາຍະຄະຕາສະຕິແມ່ນດ້ວຍອາການແບບນີ້ (໕)

ອີກປະການໜຶ່ງ ພິກຂຸເຫັນຊາກສົບທີ່ເຂົາຖິ້ມໄວ້ໃນປ່າຊ້າ ເຊິ່ງຕາຍແລ້ວ ໑ ມື້ ຕາຍແລ້ວ ໒ ມື້ ຫຼືຕາຍແລ້ວ ໓ ມື້ ເປັນສົບຂຶ້ນອືດ ສົບຂຽວແຫຼ້ ສົບມີນ້ຳເຫຼືອງຫຍົດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ພິຈາລະນາກາຍນີ້ເຂົ້າໄປປຽບທຽບວ່າ "ແມ່ນກາຍນີ້ກໍມີສະພາບແບບນັ້ນ ມີລັກສະນະແບບນັ້ນ ບໍ່ລ່ວງພົ້ນຄວາມເປັນແບບນັ້ນໄປໄດ້"

ພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ແບບນີ້ ຍ່ອມລະຄວາມດຳຣິທີ່ສັບສົນ ອັນອາໄສເຮືອນໄດ້ ຍ້ອນລະຄວາມດຳຣິທີ່ສັບສົນນັ້ນໄດ້ ຈິດທີ່ເປັນໄປພາຍໃນກາຍທີ່ນັ້ນ ຍ່ອມດຳລົງຄືເກົ່າ ເປັນທຳເອກຜຸດຂຶ້ນ ຕັ້ງໝັ້ນ ພິກຂຸຊື່ວ່າ ຈະເລີນກາຍະຄະຕາສະຕິແມ່ນດ້ວຍອາການແບບນີ້ (໖)

ອີກປະການໜຶ່ງ ພິກຂຸເຫັນຊາກສົບທີ່ເຂົາຖິ້ມໄວ້ໃນປ່າຊ້າ ເຊິ່ງຖືກກາຈິກກິນ ແຮ້ງທຶ້ງກິນ ນົກຕະຣະກຣຸມຈິກກິນ ໝາກັດກິນ ໝາຈິ້ງຈອກກັດກິນ ຫຼືສັດນ້ອຍ ໆ ຫຼາຍຊະນິດກັດກິນຢູ່ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ພິຈາລະນາກາຍນີ້ເຂົ້າໄປປຽບທຽບວ່າ "ແມ່ນກາຍນີ້ກໍມີສະພາບແບບນັ້ນ ມີລັກສະນະແບບນັ້ນ ບໍ່ລ່ວງພົ້ນຄວາມເປັນແບບນັ້ນໄປໄດ້" ພິກຂຸຜູ້ບໍ່ຜະໝາດ ຯລຯ ພິກຂຸຊື່ວ່າ ຈະເລີນກາຍະຄະຕາສະຕິແມ່ນດ້ວຍອາການແບບນີ້ (໗)

ອີກປະການໜຶ່ງ ພິກຂຸເຫັນຊາກສົບທີ່ເຂົາຖິ້ມໄວ້ໃນປ່າຊ້າເປັນໂຄງກະດູກ ມີຊີ້ນແລະເລືອດ ມີເອັນຕຣຶງຮັດຢູ່ ແມ່ນສັນໃດ ຯລຯ ເປັນໂຄງກະດູກ ບໍ່ມີຊີ້ນ ແຕ່ຍັງມີເລືອດເປື້ອນເປິະ ມີເອັນຕຣຶງຮັດຢູ່ ແມ່ນສັນໃດ ຯລຯ ເປັນໂຄງກະດູກ ບໍ່ມີຊີ້ນແລະເລືອດ ແຕ່ຍັງມີເອັນຕຣຶງຮັດຢູ່ ແມ່ນສັນໃດ ຯລຯ ເປັນໂຄງກະດູກ ບໍ່ມີເອັນຕຣຶງຮັດແລ້ວ ກະຈຸຍກະຈາຍໄປໃນທິດໃຫຍ່ທິດສຽງ ຄື ກະດູກມືຢູ່ທາງທິດໜຶ່ງ ກະດູກຕີນຢູ່ທາງທິດໜຶ່ງ ກະດູກແຂ່ງຢູ່ທາງທິດໜຶ່ງ ກະດູກຂາຢູ່ທາງທິດໜຶ່ງ ກະດູກສະເອວຢູ່ທາງທິດໜຶ່ງ ກະດູກສັນຫຼັງຢູ່ທາງທິດໜຶ່ງ ກະດູກຂ້າງຢູ່ທາງທິດໜຶ່ງ ກະດູກກ້ານຄໍຢູ່ທາງທິດໜຶ່ງ ກະດູກຄໍຢູ່ທາງທິດໜຶ່ງ ກະດູກຄາງຢູ່ທາງທິດໜຶ່ງ ກະດູກແຂ້ວຢູ່ທາງທິດໜຶ່ງ ກະໂຫລກຫົວຢູ່ທາງທິດໜຶ່ງ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ພິຈາລະນາກາຍນີ້ເຂົ້າໄປປຽບທຽບວ່າ "ແມ່ນກາຍນີ້ກໍມີສະພາບແບບນັ້ນ ມີລັກສະນະແບບນັ້ນ ບໍ່ລ່ວງພົ້ນຄວາມເປັນແບບນັ້ນໄປໄດ້" ພິກຂຸຜູ້ບໍ່ຜະໝາດ ຯລຯ ພິກຂຸຊື່ວ່າຈະເລີນກາຍະຄະຕາສະຕິແມ່ນດ້ວຍອາການແບບນີ້ (໘-໑໑)

ອີກປະການໜຶ່ງ ພິກຂຸເຫັນຊາກສົບທີ່ເຂົາຖິ້ມໄວ້ໃນປ່າຊ້າ ເຊິ່ງເປັນທ່ອນກະດູກສີຂາວເໜືອນສີສັງ ຯລຯ ເປັນກະດູກກອງຢູ່ນຳກັນເກີນກວ່າ ໑ ປີ ຯລຯ ເປັນກະດູກຜຸປົ່ນເປັນຕອນນ້ອຍຕອນນ້ອຍ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ພິຈາລະນາກາຍນີ້ເຂົ້າໄປປຽບທຽບວ່າ "ແມ່ນກາຍນີ້ກໍມີສະພາບແນວນັ້ນ ມີລັກສະນະແນວນັ້ນ ບໍ່ລ່ວງພົ້ນຄວາມເປັນແນວນັ້ນໄປໄດ້"໑ ພິກຂຸຜູ້ບໍ່ຜະໝາດ ຯລຯ ພິກຂຸຊື່ວ່າຈະເລີນກາຍະຄະຕາສະຕິແມ່ນດ້ວຍອາການແນວນີ້ (໑໒-໑໔)

[໑໕໕] ອີກປະການໜຶ່ງ ພິກຂຸສະຫງັດຈາກກາມແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ ທ່ານທຳກາຍນີ້ໃຫ້ຊຸ່ມຊື່ນເອີບອີ່ມດ້ວຍປີຕິແລະສຸກອັນເກີດຈາກວິເວກ ຮູ້ສຶກຊາບຊ່ານຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ປີຕິແລະສຸກອັນເກີດຈາກວິເວກຈະບໍ່ຖືກຕ້ອງ ພະນັກງານອາບນ້ຳ ຫຼືລູກມືພະນັກງານອາບນ້ຳຜູ້ຊ່ຽວຊານ ເທຜົງຖູໂຕລົງໃນພາຊະນະສຳລິດແລ້ວ ເອົານ້ຳປະພົມໃຫ້ຕິດເປັນກ້ອນ ກ້ອນຖູໂຕນັ້ນທີ່ມີຢາງຊຶມໄປຈັບ ກໍຕິດກັນໝົດ ບໍ່ກະຈາຍອອກ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ທຳກາຍນີ້ໃຫ້ຊຸ່ມຊື່ນເອີບອີ່ມ ດ້ວຍປີຕິແລະສຸກອັນເກີດຈາກວິເວກ ຮູ້ສຶກຊາບຊ່ານຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ປີຕິແລະສຸກອັນເກີດຈາກວິເວກຈະບໍ່ຖືກຕ້ອງ ພິກຂຸຜູ້ບໍ່ຜະໝາດ ຯລຯ ພິກຂຸຊື່ວ່າ ຈະເລີນກາຍະຄະຕາສະຕິແມ່ນດ້ວຍອາການແນວນີ້ (໑໕)

ອີກປະການໜຶ່ງ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານ ຯລຯ ຢູ່ ທ່ານທຳກາຍນີ້ໃຫ້ຊຸ່ມຊື່ນເອີບອີ່ມ ດ້ວຍປີຕິແລະສຸກອັນເກີດຈາກສະມາທິ ຮູ້ສຶກຊາບຊ່ານຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ປີຕິແລະສຸກອັນເກີດຈາກສະມາທິຈະບໍ່ຖືກຕ້ອງ ແມ່ນ້ຳເປັນວັງວົນ ບໍ່ມີທາງທີ່ກະແສນ້ຳຈະໄຫຼເຂົ້າໄດ້ທັງດ້ານຕາເວັນອອກ ດ້ານຕາເວັນຕົກ ດ້ານເໜືອ ແລະດ້ານໃຕ້ ຝົນກໍບໍ່ຕົກຕາມລະດູ ແຕ່ກະແສນ້ຳເຢັນພຸ່ງຂຶ້ນຈາກແມ່ນ້ຳນັ້ນ ແລ້ວເຮັດແມ່ນ້ຳນັ້ນໃຫ້ຊຸ່ມຊື່ນເອີບອາບ ເນືອງນອງໄປດ້ວຍນ້ຳເຢັນ ບໍ່ມີສ່ວນໃດຂອງແມ່ນ້ຳນັ້ນ ທີ່ນ້ຳເຢັນຈະບໍ່ຖືກຕ້ອງ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ທຳກາຍນີ້ໃຫ້ຊຸ່ມຊື່ນເອີບອີ່ມ ດ້ວຍປີຕິແລະສຸກອັນເກີດຈາກສະມາທິ ຮູ້ສຶກຊາບຊ່ານຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ປີຕິແລະສຸກອັນເກີດຈາກສະມາທິຈະບໍ່ຖືກຕ້ອງ ພິກຂຸຜູ້ບໍ່ຜະໝາດ ຯລຯ ພິກຂຸຊື່ວ່າຈະເລີນກາຍະຄະຕາສະຕິແມ່ນດ້ວຍອາການແນວນີ້ (໑໖)

ອີກປະການໜຶ່ງ ຍ້ອນປີຕິຈາງຄາຍອອກ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານ ຯລຯ ຢູ່ ທ່ານທຳກາຍນີ້ໃຫ້ຊຸ່ມຊື່ນເອີບອີ່ມ ດ້ວຍສຸກອັນບໍ່ມີປີຕິ ຮູ້ສຶກຊາບຊ່ານຢູ່ ບໍ່ມີສ່ວນໃດຂອງຮ່າຍກາຍທີ່ສຸກອັນບໍ່ມີປີຕິຈະບໍ່ຖືກຕ້ອງ ປຽບຄືໃນກໍອຸບົນ ກໍປະທຸມະ ຫຼື ກໍບຸນທະຣິກ ດອກບົວ ດອກບົວຫຼວງ ຫຼື ດອກບົວຂາວບາງເຫຼົ່າທີ່ເກີດຈະເລີນເຕີບໂຕໃນນ້ຳ ຍັງບໍ່ພົ້ນນ້ຳ ຈົມຢູ່ໃຕ້ນ້ຳ ມີນ້ຳຫລໍ່ລ້ຽງໄວ້ ດອກບົວເຫຼົ່ານັ້ນຊຸ່ມຊື່ນ

ເອີບອາບຊາບຊຶມດ້ວຍນ້ຳເຢັນຕັ້ງແຕ່ຍອດເຖິງເຫງົ້າ ບໍ່ມີສ່ວນໃດທີ່ນ້ຳເຢັນຈະບໍ່ຖືກຕ້ອງ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ທຳກາຍນີ້ໃຫ້ຊຸ່ມຊື່ນເອີບອິ່ມດ້ວຍສຸກອັນບໍ່ມີປີຕິ ຮູ້ສຶກຊາບຊ່ານຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ສຸກອັນບໍ່ມີປີຕິຈະບໍ່ຖືກຕ້ອງ ພິກຂຸຜູ້ບໍ່ຜະໝາດ ໆລໆ ພິກຂຸຊື່ວ່າ ຈະເລີນກາຍະຄະຕາສະຕິແມ່ນດ້ວຍອາການແບບນີ້ (໑໗)

ອີກປະການໜຶ່ງ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນ ພິກຂຸຈຶ່ງບັນລຸຈະຕຸດຖະຊານ ໆລໆ ຢູ່ ທ່ານມີໃຈອັນບໍລິສຸດຜຸດຜ່ອງນັ່ງແຜ່ໄປທົ່ວກາຍນີ້ ບໍ່ມີສ່ວນໃດຂອງຮ່າງກາຍທີ່ໃຈອັນບໍລິສຸດຜຸດຜ່ອງຈະບໍ່ຖືກຕ້ອງ ປຽບຄື ບຸຣຸດນັ່ງໃຊ້ຜ້າຂາວຄຸມໂຕຕະຫຼອດຫົວ ບໍ່ມີສ່ວນໃດຂອງຮ່າງກາຍທີ່ຜ້າຂາວຈະບໍ່ປົກຄຸມ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ມີໃຈອັນບໍລິສຸດຜຸດຜ່ອງນັ່ງແຜ່ໄປທົ່ວກາຍນີ້ ບໍ່ມີສ່ວນໃດຂອງຮ່າງກາຍທີ່ໃຈອັນບໍລິສຸດຜຸດຜ່ອງຈະບໍ່ຖືກຕ້ອງ

ພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ແບບນີ້ ຍ່ອມລະຄວາມດຳຣິທີ່ສັບສົນ ອັນອາໄສເຮືອນໄດ້ ຍ້ອນລະຄວາມດຳຣິທີ່ສັບສົນນັ້ນໄດ້ ຈິດທີ່ເປັນໄປພາຍໃນກາຍທີ່ນັ້ນ ຍ່ອມດຳລົງຄືເກົ່າ ເປັນທຳເອກຜຸດຂຶ້ນ ຕັ້ງໝັ້ນ ພິກຂຸຊື່ວ່າ ຈະເລີນກາຍະຄະຕາສະຕິແມ່ນດ້ວຍອາການແບບນີ້ (໑໘)

[໑໕໖] ພິກຂຸທັງຫຼາຍ ກາຍະຄະຕາສະຕິອັນພິກຂຸອົງໃດອົງໜຶ່ງຈະເລີນ ເຮັດໃຫ້ຫຼາຍແລ້ວ ກຸສົນທຳແບບໃດແບບໜຶ່ງທີ່ເປັນສ່ວນແຫ່ງວິດຊາ ຍ່ອມເປັນພາວະນາທີ່ຢັ່ງລົງໃນຈິດຂອງພິກຂຸນັ້ນ ມະຫາສະມຸດອັນຜູ້ໃດຜູ້ໜຶ່ງສຳຜັດດ້ວຍໃຈແລ້ວ ແມ່ນ້ຳນ້ອຍສາຍໃດສາຍໜຶ່ງທີ່ໄຫຼໄປສູ່ສະມຸທຍ່ອມຜາກົດພາຍໃນຈິດຂອງຜູ້ນັ້ນ ແມ່ນສັນໃດ ກາຍະຄະຕາສະຕິອັນພິກຂຸອົງໃດອົງໜຶ່ງຈະເລີນ ເຮັດໃຫ້ຫຼາຍແລ້ວ ກຸສົນທຳແບບໃດແບບໜຶ່ງ ທີ່ເປັນສ່ວນແຫ່ງວິດຊາ ຍ່ອມເປັນພາວະນາທີ່ຢັ່ງລົງໃນຈິດຂອງພິກຂຸນັ້ນ ຄື ກັນສັນນັ້ນ

ພິກຂຸທັງຫຼາຍ ກາຍະຄະຕາສະຕິອັນພິກຂຸອົງໃດອົງໜຶ່ງບໍ່ຈະເລີນ ບໍ່ເຮັດໃຫ້ຫຼາຍແລ້ວ ມານຍ່ອມໄດ້ຊ່ອງ ໄດ້ອາລົມຂອງພິກຂຸນັ້ນ ປຽບຄືບຸຣຸດຄວ່າງກ້ອນສິລາໜັກໄປທີ່ກອງດິນປຽກ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ກ້ອນສິລາໜັກນັ້ນ ຈະເພິ່ງຈົມລົງໃນກອງດິນປຽກນັ້ນໄດ້ບໍ?"

ພິກຂຸເຫຼົ່ານັ້ນຂາບທູນວ່າ "ໄດ້ ຂ້ານ້ອຍ"

"ພິກຂຸທັງຫຼາຍ ແນວນັ້ນຄືກັນ ກາຍະຄະຕາສະຕິອັນພິກຂຸອົງໃດອົງໜຶ່ງບໍ່ຈະເລີນ ບໍ່ເຮັດໃຫ້ຫຼາຍແລ້ວ ມານຍ່ອມໄດ້ຊ່ອງ ໄດ້ອາລົມຂອງພິກຂຸນັ້ນ

ປຽບຄື ໄມ້ແຫ້ງສະນິດ ຕໍ່ມາ ບຸຣຸດນຳໄປເຮັດເປັນໄມ້ສີໄຟ ດ້ວຍຫວັງວ່າ "ເຮົາຈັກກໍ່ໄຟ

ໃຫ້ເກີດຄວາມຮ້ອນຂຶ້ນ" ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ບຸຣຸດນັ້ນໃຊ້ໄມ້ທີ່ແຫ້ງສະນິດນັ້ນມາເຮັດເປັນໄມ້ສີໄຟແລ້ວສີໃຫ້ເປັນໄຟເກີດຄວາມຮ້ອນຂຶ້ນໄດ້ບໍ?"

"ໄດ້ ຂ້ານ້ອຍ"

"ພິກຂຸທັງຫຼາຍ ແນວນັ້ນຄືກັນ ກາຍະຄະຕາສະຕິອັນພິກຂຸອົງໃດອົງໜຶ່ງບໍ່ຈະເລີນ ບໍ່ເຮັດໃຫ້ຫຼາຍແລ້ວ ມານຍ່ອມໄດ້ຊ່ອງ ໄດ້ອາລົມຂອງພິກຂຸນັ້ນ

ປຽບຄື ໝໍ້ນໍ້າວ່າງເປົ່າ ທີ່ເຂົາຕັ້ງໄວ້ເທິງເຄື່ອງຮອງ ຕໍ່ມາ ບຸຣຸດຖືເອົາໝໍ້ນໍ້ານັ້ນມາເຮັດເປັນເຄື່ອງຕັກນໍ້າ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ບຸຣຸດນັ້ນ ຈະເພິ່ງຕັກນໍ້າໄດ້ບໍ?"

"ໄດ້ ຂ້ານ້ອຍ"

"ພິກຂຸທັງຫຼາຍ ແນວນັ້ນຄືກັນ ກາຍະຄະຕາສະຕິອັນພິກຂຸອົງໃດອົງໜຶ່ງບໍ່ຈະເລີນ ບໍ່ເຮັດໃຫ້ຫຼາຍແລ້ວ ມານຍ່ອມໄດ້ຊ່ອງ ໄດ້ອາລົມຂອງພິກຂຸນັ້ນ

[໑໘໗] ພິກຂຸທັງຫຼາຍ ກາຍະຄະຕາສະຕິອັນພິກຂຸອົງໃດອົງໜຶ່ງຈະເລີນ ເຮັດໃຫ້ຫຼາຍແລ້ວ ມານຍ່ອມບໍ່ໄດ້ປ່ອງ ບໍ່ໄດ້ອາລົມຂອງພິກຂຸນັ້ນ

ປຽບຄື ບຸຣຸດໂຍນກໍ້ຝ້າຍເບົາ ລົງເທິງແຜ່ນແປ້ນພຽງ ທີ່ເຮັດດ້ວຍໄມ້ແກ່ນລ້ວນ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ບຸຣຸດນັ້ນເພິ່ງໂຍນກໍ້ຝ້າຍເບົາ ນັ້ນລົງເທິງແຜ່ນແປ້ນພຽງທີ່ເຮັດດ້ວຍໄມ້ແກ່ນລ້ວນໄດ້ບໍ?"

"ບໍ່ໄດ້ ຂ້ານ້ອຍ"

"ພິກຂຸທັງຫຼາຍ ແນວນັ້ນຄືກັນ ກາຍະຄະຕາສະຕິອັນພິກຂຸອົງໃດອົງໜຶ່ງຈະເລີນ ເຮັດໃຫ້ຫຼາຍແລ້ວ ມານຍ່ອມບໍ່ໄດ້ປ່ອງ ບໍ່ໄດ້ອາລົມຂອງພິກຂຸນັ້ນ

ປຽບຄື ໄມ້ດິບມີຢາງ ຕໍ່ມາບຸຣຸດນຳໄປເຮັດເປັນໄມ້ສີໄຟ ດ້ວຍຫວັງວ່າ "ເຮົາຈັກສີໄຟໃຫ້ເກີດຄວາມຮ້ອນຂຶ້ນ" ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ບຸຣຸດນັ້ນເອົາໄມ້ດິບທີ່ມີຢາງນັ້ນມາເຮັດໄມ້ສີໄຟແລ້ວສີໃຫ້ເປັນໄຟເກີດຄວາມຮ້ອນຂຶ້ນໄດ້ບໍ?"

"ບໍ່ໄດ້ ຂ້ານ້ອຍ"

"ພິກຂຸທັງຫຼາຍ ແນວນັ້ນຄືກັນ ກາຍະຄະຕາສະຕິອັນພິກຂຸອົງໃດອົງໜຶ່ງຈະເລີນ ເຮັດໃຫ້ຫຼາຍແລ້ວ ມານຍ່ອມບໍ່ໄດ້ປ່ອງ ບໍ່ໄດ້ອາລົມຂອງພິກຂຸນັ້ນ

ປຽບຄື ໝໍ້ນ້ຳທີ່ມີນ້ຳເຕັມພຽງຂອບປາກ ພໍທີ່ກາຈະດື່ມໄດ້ ທີ່ເຂົາຕັ້ງໄວ້ເທິງເຄື່ອງຮອງຕັ່ງມາ ບຸຣຸດຖືເອົາໝໍ້ນ້ຳນັ້ນມາເຮັດເປັນເຄື່ອງຕັກນ້ຳ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດຄື ບຸຣຸດນັ້ນຈະຕັກນ້ຳໄດ້ບໍ?"

"ບໍ່ໄດ້ ຂ້ານ້ອຍ"

"ພິກຂຸທັງຫຼາຍ ແນວນັ້ນຄືກັນ ກາຍະຄະຕາສະຕິອັນພິກຂຸອົງໃດອົງໜຶ່ງຈະເລີນ ເຮັດໃຫ້ຫຼາຍແລ້ວ ມານຍ່ອມບໍ່ໄດ້ປ່ອງ ບໍ່ໄດ້ອາລົມຂອງພິກຂຸນັ້ນ

[໑໕໗] ພິກຂຸທັງຫຼາຍ ກາຍະຄະຕາສະຕິອັນພິກຂຸອົງໃດອົງໜຶ່ງຈະເລີນ ເຮັດໃຫ້ຫຼາຍແລ້ວ ພິກຂຸນັ້ນ ນ້ອມຈິດໄປເພື່ອເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງ ເຊິ່ງທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງໃດ ໆ ເມື່ອມີສະຕິເປັນເຫດ ຍ່ອມເຖິງຄວາມເປັນຜູ້ປະຈັກແຈ້ງໃນທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງນັ້ນ ໆ ໄດ້

ປຽບຄື ໝໍ້ນ້ຳ ມີນ້ຳເຕັມພຽງຂອບປາກ ພໍທີ່ກາຈະດື່ມໄດ້ ທີ່ເຂົາຕັ້ງໄວ້ເທິງເຄື່ອງຮອງບຸຣຸດຜູ້ມີກຳລັງເພິ່ງສັ່ນໝໍ້ນ້ຳນັ້ນໂດຍວິທີໃດ ໆ ນ້ຳນັ້ນຈະເພິ່ງໄຫຼມາໂດຍວິທີນັ້ນ ໆ ໄດ້ບໍ?"

"ໄດ້ ຂ້ານ້ອຍ"

"ພິກຂຸທັງຫຼາຍ ແນວນັ້ນຄືກັນ ກາຍະຄະຕາສະຕິອັນພິກຂຸອົງໃດອົງໜຶ່ງຈະເລີນ ເຮັດໃຫ້ຫຼາຍແລ້ວ ພິກຂຸນັ້ນ ນ້ອມຈິດໄປເພື່ອເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເຊິ່ງທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງໃດ ໆ ເມື່ອມີສະຕິເປັນເຫດ ຍ່ອມເຖິງຄວາມເປັນຜູ້ປະຈັກແຈ້ງໃນທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງນັ້ນ ໆ ໄດ້

ປຽບຄື ສະໂບກຂະຣະນີສີ່ຫລ່ຽມ ໃນພື້ນທີ່ງຮາບທີ່ເຂົາພູນຄັນໄວ້ ມີນ້ຳເຕັມສະເໝີຂອບປາກ ພໍທີ່ກາຈະດື່ມໄດ້ ບຸຣຸດຜູ້ມີກຳລັງເຈາະຄັນສະໂບກຂະຣະນີນັ້ນໂດຍວິທີໃດ ໆ ນ້ຳນັ້ນຈະເພິ່ງໄຫຼມາໂດຍວິທີນັ້ນ ໆ ໄດ້ບໍ?"

"ໄດ້ ຂ້ານ້ອຍ"

"ພິກຂຸທັງຫຼາຍ ແນວນັ້ນຄືກັນ ກາຍະຄະຕາສະຕິອັນພິກຂຸອົງໃດອົງໜຶ່ງຈະເລີນ ເຮັດໃຫ້ຫຼາຍແລ້ວ ພິກຂຸນັ້ນນ້ອມຈິດໄປເພື່ອເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເຊິ່ງທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງໃດ ໆ ເມື່ອມີສະຕິເປັນເຫດ ຍ່ອມເຖິງຄວາມເປັນຜູ້ປະຈັກແຈ້ງໃນທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງນັ້ນ ໆ ໄດ້

ປຽບຄື ລົດທີ່ເຂົາທຽມມ້າອາຊາໄນ ມີແສ້ສຽບໄວ້ໃນລະຫວ່າງມ້າທັງສອງຈອດຢູ່ເທິງພື້ນທີ່ພຽງກົງທາງໃຫຍ່ ໔ ແຍກ ນາຍສາຣະຖີຜູ້ເຝິກມ້າ ເປັນອາຈານຂັບຂີ່ຜູ້ຊ່ຽວຊານ ຂຶ້ນລົດນັ້ນແລ້ວ ມືຊ້າຍຈັບເຊືອກ ມືຂວາຈັບແສ້ ເພິ່ງຂັບລົດໄປສູ່ທີ່ປາຖະໜາໄດ້ ແມ່ນສັນໃດ ກາຍະຄະຕາສະຕິກໍຄືກັນສັນນັ້ນ ອັນພິກຂຸອົງໃດອົງໜຶ່ງຈະເລີນ ເຮັດໃຫ້ຫຼາຍແລ້ວ ທ່ານນ້ອມຈິດໄປເພື່ອເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເຊິ່ງທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງໃດ ໆ ເມື່ອມີສະຕິເປັນເຫດ ຍ່ອມເຖິງຄວາມເປັນຜູ້ປະຈັກແຈ້ງ ໃນທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງນັ້ນ ໆ ໄດ້

[໑໕໘] ພິກຂຸທັງຫຼາຍ ເມື່ອກາຍະຄະຕາສະຕິອັນພິກຂຸປະຕິບັດ ຈະເລີນ ເຮັດໃຫ້ຫຼາຍເຮັດໃຫ້ເປັນຄືຍານ ເຮັດໃຫ້ເປັນທີ່ຕັ້ງ ຕັ້ງໄວ້ເລື້ອຍ ໆ ສັ່ງສົມແລ້ວ ຜາຣົບສະເໝີດີແລ້ວ ທ່ານເພິ່ງຫວັງອານິສົງ ໑໐ ປະການນີ້ ຄື

໑. ເປັນຜູ້ອົດກັ້ນຕໍ່ຄວາມບໍ່ຍິນດີແລະຄວາມຍິນດີໄດ້ ບໍ່ຖືກຄວາມບໍ່ຍິນດີຄອບງຳ ຍ່ອມຄອບງຳຄວາມບໍ່ຍິນດີທີ່ເກີດຂຶ້ນແລ້ວໄດ້
໒. ເປັນຜູ້ອົດກັ້ນຕໍ່ໄພແລະຄວາມຢ້ານກົວໄດ້ ບໍ່ຖືກໄພແລະຄວາມຢ້ານກົວຄອບງຳ ຍ່ອມຄອບງຳໄພແລະຄວາມຢ້ານກົວທີ່ເກີດຂຶ້ນແລ້ວໄດ້
໓. ເປັນຜູ້ອົດທົນຕໍ່ຄວາມໜາວ ຄວາມຮ້ອນ ຄວາມຫິວ ຄວາມຢາກ ຕໍ່ການຖືກເຫລືອບຍຸງ ລົມ ແດດ ແລະສັດເລືອຄານທັງຫຼາຍລົບກວນ ຕໍ່ຄຳເວົ້າຫຍາບຄາຍຮ້າຍແຮງຕ່າງ ໆ ເປັນຜູ້ອົດກັ້ນເວທະນາອັນມີໃນຮ່າງກາຍທີ່ເກີດຂຶ້ນແລ້ວເປັນທຸກ ກ້າແຂງ ເຜັດຮ້ອນ ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ພາກຊີວິດໄດ້
໔. ເປັນຜູ້ໄດ້ຊານ ໔ ເຊິ່ງເປັນອາພິເຈຕະສິກາ ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນເປັນຜູ້ໄດ້ຕາມຄວາມປາຖະໜາໂດຍບໍ່ຍາກ ໂດຍບໍ່ລຳບາກ
໕. ບັນລຸວິທີສະແດງລິດໄດ້ຫຼາຍແບບ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ຜາກົດ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້
໖. ໄດ້ຍິນສຽງ ໒ ຊະນິດ ຄື (໑) ສຽງທິບ (໒) ສຽງມະນຸດ ທັງທີ່ຢູ່ໄກແລະຢູ່ໃກ້ດ້ວຍຫູທິບອັນບໍລິສຸດເໜືອມະນຸດ ຯລຯ
໗. ກຳນົດຮູ້ໃຈຂອງສັດອື່ນແລະບຸກຄົນອື່ນ ຄື ຈິດມີຣາຄະກໍຮູ້ແຈ້ງວ່າ “ຈິດມີຣາຄະ” ຫຼືຈິດປາສະຈາກຣາຄະກໍຮູ້ແຈ້ງວ່າ “ຈິດປາສະຈາກຣາຄະ” ຈິດມີໂທສະ ຯລຯ ຫຼືຈິດປາສະຈາກໂທສະ ຯລຯ ຈິດມີໂມຫະ ຯລຯ ຫຼື ຈິດປາສະຈາກໂມຫະ ຯລຯ ຈິດຫົດຫູ່ ຯລຯ ຫຼື ຈິດຟຸ້ງຊ່ານ ຯລຯ ຈິດເປັນມະຫັກຄະຕະ໑ ຯລຯ ຫຼື ຈິດບໍ່ເປັນມະຫັກຄະຕະ ຯລຯ ຈິດມີຈິດອື່ນຍິ່ງກວ່າ ຯລຯ ຫຼື ຈິດບໍ່

ມີຈິດອື່ນຍິ່ງກວ່າ ໆລໆ ຈິດເປັນສະມາທິ ໆລໆ ຫຼື ຈິດບໍ່ເປັນສະມາທິ ໆລໆ ຈິດລຸດພົ້ນກໍຮູ້ແຈ້ງວ່າ "ຈິດລຸດພົ້ນ" ຫຼື ຈິດບໍ່ລຸດພົ້ນກໍຮູ້ແຈ້ງວ່າ "ຈິດບໍ່ລຸດພົ້ນ"

໘. ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໆລໆ ຍ່ອມຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດແບບນີ້

໙. ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ໆລໆ ຍ່ອມຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳ

໑໐. ຍ້ອນອາສະວະໝົດໄປຍ່ອມເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ເມື່ອກາຍະຄະຕາສະຕິອັນພິກຂຸປະຕິບັດ ຈະເລີນ ເຮັດໃຫ້ຫຼາຍ ເຮັດໃຫ້ເປັນຄືຍານ ເຮັດໃຫ້ເປັນທີ່ຕັ້ງ ຕັ້ງໄວ້ເລື້ອຍ ໆ ສະສົມແລ້ວ ຜາຣົບສະເໝີດີແລ້ວ ທ່ານເພິ່ງຫວັງອານິສົງ ໑໐ ປະການນີ້ໄດ້"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ກາຍະຄະຕາສະຕິສູດທີ ໙ ຈົບ**

# ໑໐. ສັງຂາຣູປະປັດຕິສູດ

## ວ່າດ້ວຍການເກີດຂຶ້ນແຫ່ງສັງຂານ

## ປະຕິປະທາອັນໃຫ້ສຳເລັດຄວາມປາຖະໜາ

[໑໗໐] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ "ພິກຂຸທັງຫຼາຍ ເຮົາຈັກສະແດງຄວາມເກີດຂຶ້ນແຫ່ງສັງຂານແກ່ທ່ານ

ທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

[໑໖໑] "ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ ເປັນຜູ້ປະກອບດ້ວຍສັດທາ ປະກອບດ້ວຍສີນ ປະກອບດ້ວຍສຸຕະ ປະກອບດ້ວຍຈາຄະ ປະກອບດ້ວຍປັນຍາ ພິກຂຸນັ້ນ ມີຄວາມປາຖະໜາແນວນີ້ວ່າ "ໂອໜໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບຂັດຕິຍະມະຫາສານ" ທ່ານຕັ້ງຈິດນັ້ນ ອະທິຖານຈິດນັ້ນ ຈະເລີນຈິດນັ້ນ ສັງຂານ ແລະ ວິຫານທຳເຫຼົ່ານັ້ນອັນທ່ານຈະເລີນ ເຮັດໃຫ້ຫຼາຍແລ້ວແນວນີ້ ເປັນໄປເພື່ອຄວາມເກີດຂຶ້ນໃນຂັດຕິຍະມະຫາສານນັ້ນໄດ້

ພິກຂຸທັງຫຼາຍ ມັກນີ້ ປະຕິປະທານີ້ ເປັນໄປເພື່ອຄວາມເກີດຂຶ້ນໃນຂັດຕິຍະມະຫາສານນັ້ນ

[໑໖໒] ພິກຂຸທັງຫຼາຍ ອີກປະການໜຶ່ງ ພິກຂຸເປັນຜູ້ປະກອບດ້ວຍສັດທາ ປະກອບດ້ວຍສີນ ປະກອບດ້ວຍສຸຕະ ປະກອບດ້ວຍຈາຄະ ປະກອບດ້ວຍປັນຍາ ພິກຂຸນັ້ນມີຄວາມປາຖະໜາແນວນີ້ວ່າ "ໂອໜໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພາມມະນະມະຫາສານ ຯລຯ ຫຼື ເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບຄະຫະບໍດີ ມະຫາສານ" ທ່ານຕັ້ງຈິດນັ້ນ ອະທິຖານຈິດນັ້ນ ຈະເລີນຈິດນັ້ນ ສັງຂານແລະວິຫານທຳເຫຼົ່ານັ້ນອັນທ່ານຈະເລີນ ເຮັດໃຫ້ຫຼາຍແລ້ວແນວນີ້ ເປັນໄປເພື່ອຄວາມເກີດຂຶ້ນໃນຄະຫະບໍດີມະຫາສານນັ້ນໄດ້

ພິກຂຸທັງຫຼາຍ ມັກນີ້ ປະຕິປະທານີ້ ເປັນໄປເພື່ອຄວາມເກີດຂຶ້ນໃນຄະຫະບໍດີມະຫາສານນັ້ນ

[໑໖໓] ອີກປະການໜຶ່ງ ພິກຂຸເປັນຜູ້ປະກອບດ້ວຍສັດທາ ປະກອບດ້ວຍສີນ ປະກອບດ້ວຍສຸຕະ ປະກອບດ້ວຍຈາຄະ ປະກອບດ້ວຍປັນຍາ ພິກຂຸນັ້ນໄດ້ຟັງວ່າ "ເທບຊັ້ນຈາຕຸມະຫາຣາດມີອາຍຸຍືນ ມີຜິວພັນຜ່ອງໃສ ມີຄວາມສຸກຫຼາຍ" ພິກຂຸນັ້ນ ມີຄວາມປາຖະໜາແນວນີ້ວ່າ "ໂອໜໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບຊັ້ນຈາຕຸມະຫາຣາດ" ທ່ານຕັ້ງຈິດນັ້ນ ອະທິຖານຈິດນັ້ນ ຈະເລີນຈິດນັ້ນ ສັງຂານແລະວິຫານທຳເຫຼົ່ານັ້ນອັນທ່ານຈະເລີນ ເຮັດໃຫ້ຫຼາຍແລ້ວແນວນີ້ ເປັນໄປເພື່ອຄວາມເກີດຂຶ້ນໃນເທບຊັ້ນຈາຕຸມະຫາຣາດນັ້ນໄດ້

ພິກຂຸທັງຫຼາຍ ມັກນີ້ ປະຕິປະທານີ້ ເປັນໄປເພື່ອຄວາມເກີດຂຶ້ນໃນເທບຊັ້ນຈາຕຸມະຫາຣາດນັ້ນ

[໑໖໔] ອີກປະການໜຶ່ງ ພິກຂຸເປັນຜູ້ປະກອບດ້ວຍສັດທາ ປະກອບດ້ວຍສີນ ປະກອບດ້ວຍສຸຕະ ປະກອບດ້ວຍຈາຄະ ປະກອບດ້ວຍປັນຍາ ພິກຂຸນັ້ນໄດ້ຟັງວ່າ "ເທບຊັ້ນຕາວະຕິງສາ

ຯລຯ ເທບຊັ້ນຍາມາ ຯລຯ ເທບຊັ້ນດຸສິດ ຯລຯ ເທບຊັ້ນນິມມານະຣະດີ ຯລຯ ຫຼື ເທບຊັ້ນປະຣະນິມມິດະວະສະວັຕດີມີອາຍຸຍືນ ມີຜິວພັນຜ່ອງໃສ ມີຄວາມສຸກຫຼາຍ" ພິກຂຸນັ້ນ ມີຄວາມປາຖະໜາແນວນີ້ວ່າ "ໂອໜໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບຊັ້ນປະຣະນິມມິດະວະສະວັຕດີ" ທ່ານຕັ້ງຈິດນັ້ນ ອະທິຖານຈິດນັ້ນ ຈະເລີນຈິດນັ້ນ ສັງຂານແລະວິຫານທຳເຫຼົ່ານັ້ນອັນທ່ານຈະເລີນ ເຮັດໃຫ້ຫຼາຍແລ້ວແນວນີ້ ເປັນໄປເພື່ອເກີດຂຶ້ນໃນເທບຊັ້ນປະຣະນິມມິດະວະສະວັຕດີນັ້ນໄດ້

ພິກຂຸທັງຫຼາຍ ມັກນີ້ ປະຕິປະທານີ້ ເປັນໄປເພື່ອຄວາມເກີດຂຶ້ນໃນເທບຊັ້ນປິນນິມມິດ ວ ສະວັຕດີນັ້ນ

[໑໖໕] ອີກປະການໜຶ່ງ ພິກຂຸເປັນຜູ້ປະກອບດ້ວຍສັດທາ ປະກອບດ້ວຍສີນ ປະກອບດ້ວຍສຸຕະ ປະກອບດ້ວຍຈາຄະ ປະກອບດ້ວຍປັນຍາ ພິກຂຸນັ້ນໄດ້ຟັງວ່າ "ສະຫັດສະພົມມີອາຍຸຍືນ ມີຜິວພັນຜ່ອງໃສ ມີຄວາມສຸກຫຼາຍ" ສະຫັດສະພົມນ້ອມຈິດແຜ່ໄປຕະຫຼອດ ໑,໐໐໐ ໂລກກະທາດຢູ່ ແມ່ນສັດທັງຫຼາຍທີ່ເກີດແລ້ວໃນຊັ້ນສະຫັດສະພົມນັ້ນ ກໍນ້ອມຈິດແຜ່ໄປຢູ່ ປຽບຄື ບຸຣຸດມີໜ່ວຍຕາດີ ວາງໝາກຫຸ່ງແຮ້ວຜົນໜຶ່ງໄວ້ໃນມືແລ້ວພິຈາລະນາເບິ່ງ ແມ່ນສັນໃດ ສະຫັດສະພົມກໍຄືກັນສັນນັ້ນ ນ້ອມຈິດແຜ່ໄປຕະຫຼອດ ໑,໐໐໐ ໂລກກະທາດຢູ່ ແມ່ນສັດທັງຫຼາຍທີ່ເກີດແລ້ວໃນຊັ້ນສະຫັດສະພົມນັ້ນ ກໍນ້ອມຈິດແຜ່ໄປຢູ່ ພິກຂຸນັ້ນ ມີຄວາມປາຖະໜາແນວນີ້ວ່າ "ໂອໜໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເຖິງຄວາມເປັນຜູ້ຢູ່ຮ່ວມກັບສະຫັດສະພົມ" ທ່ານຕັ້ງຈິດນັ້ນ ອະທິຖານຈິດນັ້ນ ຈະເລີນຈິດນັ້ນ ສັງຂານແລະວິຫານທຳເຫຼົ່ານັ້ນອັນທ່ານຈະເລີນ ເຮັດໃຫ້ຫຼາຍແລ້ວແນວນີ້ ເປັນໄປເພື່ອຄວາມເກີດຂຶ້ນໃນຊັ້ນສະຫັດສະພົມນັ້ນໄດ້

ພິກຂຸທັງຫຼາຍ ມັກນີ້ ປະຕິປະທານີ້ ເປັນໄປເພື່ອຄວາມເກີດຂຶ້ນໃນຊັ້ນສະຫັດສະພົມນັ້ນ

[໑໖໖] ອີກປະການໜຶ່ງ ພິກຂຸເປັນຜູ້ປະກອບດ້ວຍສັດທາ ປະກອບດ້ວຍສີນ ປະກອບດ້ວຍສຸຕະ ປະກອບດ້ວຍຈາຄະ ປະກອບດ້ວຍປັນຍາ ພິກຂຸນັ້ນໄດ້ຟັງວ່າ "ທະວິສະຫັດສະພົມ ຯລຯ ຕິສະຫັດສະພົມ ຯລຯ ຈະຕຸສະຫັດສະພົມ ຯລຯ ຫຼື ປັນຈະສະຫັດສະພົມມີອາຍຸຍືນ ມີຜິວພັນຜ່ອງໃສ ມີຄວາມສຸກຫຼາຍ" ປັນຈະສະຫັດສະພົມ ຍ່ອມນ້ອມຈິດແຜ່ໄປຕະຫຼອດ ໕,໐໐໐ ໂລກກະທາດຢູ່ ແມ່ນສັດທັງຫຼາຍທີ່ເກີດແລ້ວໃນຊັ້ນປັນຈະສະຫັດສະພົມນັ້ນ ກໍນ້ອມຈິດແຜ່ໄປຢູ່ ປຽບຄື ບຸຣຸດມີໜ່ວຍຕາດີ ວາງໝາກຫຸ່ງແຮ້ວ ໕ ຜົນໄວ້ໃນມືແລ້ວພິຈາລະນາເບິ່ງ ແມ່ນສັນໃດ ປັນຈະສະຫັດສະພົມກໍຄືກັນສັນນັ້ນ ນ້ອມຈິດແຜ່ໄປຕະຫຼອດ ໕,໐໐໐ ໂລກກະທາດຢູ່ ແມ່ນສັດທັງຫຼາຍທີ່ເກີດແລ້ວໃນຊັ້ນປັນຈະສະຫັດສະພົມນັ້ນ ກໍນ້ອມຈິດແຜ່ໄປຢູ່ ພິກຂຸນັ້ນ ມີຄວາມປາຖະໜາແນວນີ້ວ່າ "ໂອໜໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບປັນຈະສະຫັດສະພົມ" ທ່ານຕັ້ງຈິດນັ້ນ ອະທິຖານຈິດນັ້ນ ຈະເລີນຈິດນັ້ນ ສັງຂານແລະວິຫານທຳເຫຼົ່າ

ນັ້ນອັນທ່ານຈະເລີນ ເຮັດໃຫ້ຫຼາຍແລ້ວແນວນີ້ ເປັນໄປເພື່ອຄວາມເກີດຂຶ້ນໃນຊັ້ນປັນຈະສະຫັດສະພົມນັ້ນໄດ້

ພິກຂຸທັງຫຼາຍ ມັກນີ້ ປະຕິປະທານີ້ ເປັນໄປເພື່ອຄວາມເກີດຂຶ້ນໃນຊັ້ນປັນຈະສະຫັດສະພົມນັ້ນ

[໑໖໗] ອີກປະການໜຶ່ງ ພິກຂຸເປັນຜູ້ປະກອບດ້ວຍສັດທາ ປະກອບດ້ວຍສີນ ປະກອບດ້ວຍສຸຕະ ປະກອບດ້ວຍຈາຄະ ປະກອບດ້ວຍປັນຍາ ພິກຂຸນັ້ນໄດ້ຟັງວ່າ "ທະສະສະຫັດສະພົມມີອາຍຸຍືນ ມີຜິວພັນຜ່ອງໃສ ມີຄວາມສຸກຫຼາຍ" ທະສະສະຫັດສະພົມນ້ອມຈິດແຜ່ໄປຕະຫຼອດ ໑໐,໐໐໐ ໂລກກະທາດ ແມ່ນສັດທັງຫຼາຍທີ່ເກີດແລ້ວໃນຊັ້ນທະສະສະຫັດສະພົມນັ້ນ ກໍນ້ອມຈິດແຜ່ໄປຢູ່ ປຽບຄື ແກ້ວໄພທູນແປດຫລ່ຽມ ງາມສ່ອງໃສ ອັນເຂົາເຈຍຣະໄນດີແລ້ວ ວາງໄວ້ແລ້ວເທິງຜ້າກຳພົນເຫຼືອງ ຍ່ອມສ່ອງແສງເຮືອງເຮື່ອ ແມ່ນສັນໃດ ທະສະສະຫັດສະພົມກໍຄືກັນສັນນັ້ນຍ່ອມນ້ອມຈິດແຜ່ໄປຕະຫຼອດ ໑໐,໐໐໐ ໂລກກະທາດຢູ່ ແມ່ນສັດທັງຫຼາຍທີ່ເກີດແລ້ວໃນຊັ້ນທະສະສະຫັດສະພົມນັ້ນ ກໍນ້ອມຈິດແຜ່ໄປຢູ່ ພິກຂຸນັ້ນ ມີຄວາມປາຖະໜາແນວນີ້ວ່າ "ໂອໜໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບທະສະສະຫັດສະພົມ" ທ່ານຕັ້ງຈິດນັ້ນອະທິຖານຈິດນັ້ນ ຈະເລີນຈິດນັ້ນ ສັງຂານແລະວິຫານທຳເຫຼົ່ານັ້ນອັນທ່ານຈະເລີນ ເຮັດໃຫ້ຫຼາຍແລ້ວແນວນີ້ ເປັນໄປເພື່ອຄວາມເກີດຂຶ້ນໃນຊັ້ນທະສະສະຫັດສະພົມນັ້ນໄດ້

ພິກຂຸທັງຫຼາຍ ມັກນີ້ ປະຕິປະທານີ້ ເປັນໄປເພື່ອຄວາມເກີດຂຶ້ນໃນຊັ້ນທະສະສະຫັດສະພົມນັ້ນ

[໑໖໘] ອີກປະການໜຶ່ງ ພິກຂຸເປັນຜູ້ປະກອບດ້ວຍສັດທາ ປະກອບດ້ວຍສີນ ປະກອບດ້ວຍສຸຕະ ປະກອບດ້ວຍຈາຄະ ປະກອບດ້ວຍປັນຍາ ພິກຂຸນັ້ນໄດ້ຟັງວ່າ "ສະຕະສະຫັດສະພົມມີອາຍຸຍືນ ມີຜິວພັນຜ່ອງໃສ ມີຄວາມສຸກເປັນກຳລັງ" ສະຕະສະຫັດສະພົມນ້ອມຈິດແຜ່ໄປຕະຫຼອດ ໑໐໐,໐໐໐ ໂລກກະທາດຢູ່ ແມ່ນສັດທັງຫຼາຍທີ່ເກີດແລ້ວໃນຊັ້ນສະຕະສະຫັດສະພົມນັ້ນ ກໍນ້ອມຈິດແຜ່ໄປຢູ່ ປຽບຄື ແທ່ງຄຳຊົມພູນຸດທີ່ເຂົາຫຼອມດ້ວຍຄວາມຊ່ຽວຊານດີໃນເບົ້າຂອງຊ່າງຄຳຜູ້ສະຫຼາດແລ້ວວາງໄວ້ເທິງຜ້າກຳພົນເຫຼືອງ ຍ່ອມສ່ອງແສງເຮືອງໄພໂຣດ ແມ່ນສັນໃດສະຕະສະຫັດສະພົມກໍຄືກັນສັນນັ້ນ ຍ່ອມນ້ອມຈິດແຜ່ໄປຕະຫຼອດ ໑໐໐,໐໐໐ ໂລກກະທາດຢູ່ແມ່ນສັດທັງຫຼາຍທີ່ເກີດແລ້ວໃນຊັ້ນສະຕະສະຫັດສະພົມນັ້ນ ກໍນ້ອມຈິດແຜ່ໄປຢູ່ ພິກຂຸນັ້ນມີຄວາມປາຖະໜາແນວນີ້ວ່າ "ໂອໜໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບສະຕະສະຫັດສະພົມ" ທ່ານຕັ້ງຈິດນັ້ນ ອະທິຖານຈິດນັ້ນ ຈະເລີນຈິດນັ້ນ ສັງຂານແລະວິຫານທຳເຫຼົ່ານັ້ນອັນທ່ານຈະເລີນ ເຮັດໃຫ້ຫຼາຍແລ້ວແນວນີ້ ເປັນໄປເພື່ອຄວາມເກີດຂຶ້ນໃນຊັ້ນສະຕະສະຫັດສະພົມນັ້ນໄດ້

ພິກຂຸທັງຫຼາຍ ມັກນີ້ ປະຕິປະທານີ້ ເປັນໄປເພື່ອຄວາມເກີດຂຶ້ນໃນຊັ້ນສະຕະສະຫັດສະພົມນັ້ນ

[໑໖໙] ອີກປະການໜຶ່ງ ພິກຂຸເປັນຜູ້ປະກອບດ້ວຍສັດທາ ປະກອບດ້ວຍສີນ ປະກອບດ້ວຍສຸຕະ ປະກອບດ້ວຍຈາຄະ ປະກອບດ້ວຍປັນຍາ ພິກຂຸນັ້ນໄດ້ຟັງວ່າ "ເທບຊັ້ນອາພາ ຯລຯ ເທບຊັ້ນປະຣິດຕາພາ ຯລຯ ເທບຊັ້ນອັບປະມານາພາ ຯລຯ ຫຼືເທບຊັ້ນອາພັດສະຣາມີອາຍຸຍືນ ມີຜິວພັນຜ່ອງໃສ ມີຄວາມສຸກເປັນກຳລັງ" ພິກຂຸນັ້ນມີຄວາມປາຖະໜາແນວນີ້ວ່າ "ໂອນໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບຊັ້ນອາພັດສະຣາ" ທ່ານຕັ້ງຈິດນັ້ນ ອະທິຖານຈິດນັ້ນ ຈະເລີນຈິດນັ້ນ ສັງຂານແລະວິຫານທຳເຫຼົ່ານັ້ນອັນທ່ານຈະເລີນ ເຮັດໃຫ້ຫຼາຍແລ້ວແນວນີ້ ເປັນໄປເພື່ອຄວາມເກີດຂຶ້ນໃນພົມຊັ້ນອາພັດສະຣານັ້ນໄດ້

ພິກຂຸທັງຫຼາຍ ມັກນີ້ ປະຕິປະທານີ້ ເປັນໄປເພື່ອຄວາມເກີດຂຶ້ນໃນພົມຊັ້ນອາພັດສະຣານັ້ນ

[໑໗໐] ອີກປະການໜຶ່ງ ພິກຂຸເປັນຜູ້ປະກອບດ້ວຍສັດທາ ປະກອບດ້ວຍສີນ ປະກອບດ້ວຍສຸຕະ ປະກອບດ້ວຍຈາຄະ ປະກອບດ້ວຍປັນຍາ ພິກຂຸນັ້ນໄດ້ຟັງວ່າ "ເທບຊັ້ນສຸພາ ຯລຯ ເທບຊັ້ນປະຣິດຕະສຸພາ ຯລຯ ເທບຊັ້ນອັບປະມານະສຸພາ ຯລຯ ຫຼື ເທບຊັ້ນສຸພະກິນຫາມີອາຍຸຍືນ ມີຜິວພັນຜ່ອງໃສ ຯລຯ

ພິກຂຸທັງຫຼາຍ ມັກນີ້ ປະຕິປະທານີ້ ເປັນໄປເພື່ອຄວາມເກີດຂຶ້ນໃນເທບຊັ້ນສຸພະກິນຫານັ້ນ

[໑໗໑] ອີກປະການໜຶ່ງ ພິກຂຸເປັນຜູ້ປະກອບດ້ວຍສັດທາ ປະກອບດ້ວຍສີນ ປະກອບດ້ວຍສຸຕະ ປະກອບດ້ວຍຈາຄະ ປະກອບດ້ວຍປັນຍາ ພິກຂຸນັ້ນໄດ້ຟັງວ່າ "ເທບຊັ້ນເວຫັບຜະລາ ຯລຯ ເທບຊັ້ນອະວິຫາ ຯລຯ ເທບຊັ້ນອະຕັບປາ ຯລຯ ເທບຊັ້ນສຸທັດສາ ຯລຯ ເທບຊັ້ນສຸທັດສີ ຯລຯ ຫຼືເທບຊັ້ນອະກະນິດຖາມີອາຍຸຍືນ ມີຜິວພັນຜ່ອງໃສ ມີຄວາມສຸກເປັນກຳລັງ" ພິກຂຸນັ້ນມີຄວາມປາຖະໜາແນວນີ້ວ່າ "ໂອນໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບຊັ້ນອະກະນິດຖາ" ທ່ານຕັ້ງຈິດນັ້ນ ອະທິຖານຈິດນັ້ນ ຈະເລີນຈິດນັ້ນ ສັງຂານແລະວິຫານທຳເຫຼົ່ານັ້ນອັນທ່ານຈະເລີນ ເຮັດໃຫ້ຫຼາຍແລ້ວແນວນີ້ ເປັນໄປເພື່ອຄວາມເກີດຂຶ້ນໃນເທບຊັ້ນອະກະນິດຖານັ້ນໄດ້

ພິກຂຸທັງຫຼາຍ ມັກນີ້ ປະຕິປະທານີ້ ເປັນໄປເພື່ອຄວາມເກີດຂຶ້ນໃນເທບຊັ້ນອະກະນິດຖານັ້ນ

[໑໗໔] ອີກປະການໜຶ່ງ ພິກຂຸເປັນຜູ້ປະກອບດ້ວຍສັດທາ ປະກອບດ້ວຍສີນ ປະກອບດ້ວຍສຸຕະ ປະກອບດ້ວຍຈາຄະ ປະກອບດ້ວຍປັນຍາ ພິກຂຸນັ້ນໄດ້ຟັງວ່າ "ເທບຜູ້ເຂົ້າເຖິງອາກາສານັນຈາຍະຕະນະພູມມີອາຍຸຍືນ ດຳລົງຢູ່ດົນ ມີຄວາມສຸກຫຼາຍ" ພິກຂຸນັ້ນມີຄວາມປາຖະ

ໜາແນວນີ້ວ່າ "ໂອນໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບຜູ້ເຂົ້າເຖິງອາກາສານັນຈາຍະຕະນະພູມ" ຯລຯ

ພິກຂຸທັງຫຼາຍ ມັກນີ້ ປະຕິປະທານີ້ ເປັນໄປເພື່ອຄວາມເກີດຂຶ້ນໃນເທບຜູ້ເຂົ້າເຖິງອາກາສານັນຈາຍະຕະນະພູມນັ້ນ

[໑໗໓] ອີກປະການໜຶ່ງ ພິກຂຸເປັນຜູ້ປະກອບດ້ວຍສັດທາ ປະກອບດ້ວຍສີນ ປະກອບດ້ວຍສຸຕະ ປະກອບດ້ວຍຈາຄະ ປະກອບດ້ວຍປັນຍາ ພິກຂຸນັ້ນໄດ້ຟັງວ່າ "ເທບຜູ້ເຂົ້າເຖິງວິນຍານັນຈາຍະຕະນະພູມມີອາຍຸຍືນ ດຳລົງຢູ່ດົນ ມີຄວາມສຸກຫຼາຍ" ພິກຂຸນັ້ນມີຄວາມປາຖະໜາແນວນີ້ວ່າ "ໂອນໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບຜູ້ເຂົ້າເຖິງວິນຍານັນຈາຍະຕະນະພູມ" ຯລຯ

ພິກຂຸທັງຫຼາຍ ມັກນີ້ ປະຕິປະທານີ້ ເປັນໄປເພື່ອຄວາມເກີດຂຶ້ນໃນເທບຜູ້ເຂົ້າເຖິງວິນຍານັນຈາຍະຕະນະພູມນັ້ນ

[໑໗໔] ອີກປະການໜຶ່ງ ພິກຂຸເປັນຜູ້ປະກອບດ້ວຍສັດທາ ປະກອບດ້ວຍສີນ ປະກອບດ້ວຍສຸຕະ ປະກອບດ້ວຍຈາຄະ ປະກອບດ້ວຍປັນຍາ ພິກຂຸນັ້ນໄດ້ຟັງວ່າ "ເທບຜູ້ເຂົ້າເຖິງອາກິນຈັນຍາຍະຕະນະພູມ ຯລຯ ເທບຜູ້ເຂົ້າເຖິງເນວະສັນຍານາສັນຍາຍະຕະນະພູມມີອາຍຸຍືນ ດຳລົງຢູ່ດົນ ມີຄວາມສຸກຫຼາຍ" ພິກຂຸນັ້ນ ມີຄວາມປາຖະໜາແນວນີ້ວ່າ "ໂອນໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບຜູ້ເຂົ້າເຖິງເນວະສັນຍານາສັນຍາຍະຕະນະພູມ" ທ່ານຕັ້ງຈິດນັ້ນ ອະທິຖານຈິດນັ້ນ ຈະເລີນຈິດນັ້ນສັງຂານ ແລະ ວິຫານທຳເຫຼົ່ານັ້ນອັນທ່ານຈະເລີນ ເຮັດໃຫ້ຫຼາຍແລ້ວແນວນີ້ ເປັນໄປເພື່ອຄວາມເກີດຂຶ້ນໃນເທບຜູ້ເຂົ້າເຖິງເນວະສັນຍານາສັນຍາຍະຕະນະພູມນັ້ນໄດ້

ພິກຂຸທັງຫຼາຍ ມັກນີ້ ປະຕິປະທານີ້ ເປັນໄປເພື່ອຄວາມເກີດຂຶ້ນໃນເທບຜູ້ເຂົ້າເຖິງເນວະສັນຍານາສັນຍາຍະຕະນະພູມນັ້ນ

[໑໗໕] ພິກຂຸທັງຫຼາຍ ອີກປະການໜຶ່ງ ພິກຂຸເປັນຜູ້ປະກອບດ້ວຍສັດທາ ປະກອບດ້ວຍສີນ ປະກອບດ້ວຍສຸຕະ ປະກອບດ້ວຍຈາຄະ ປະກອບດ້ວຍປັນຍາ ພິກຂຸນັ້ນ ມີຄວາມປາຖະໜາແນວນີ້ວ່າ "ໂອນໍ ຍ້ອນອາສະວະໝົດໄປເຮົາເພິ່ງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ" ຍ້ອນອາສະວະໝົດໄປພິກຂຸນັ້ນຈຶ່ງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນໄດ້ ພິກຂຸທັງຫຼາຍ ພິກຂຸນີ້ຍ່ອມບໍ່ເກີດໃນພົບໃດ ໆ ອີກ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ສັງຂາຣູປະປັດຕິສູດທີ ໑໐ ຈົບ**

**ອະນຸປະທະວັກທີ ໘ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ ຄື

໑. ອະນຸປະທະສູດ
໒. ສັບປຸຣິສະສູດ
໕. ພະຫຸທາຕຸກະສູດ
໗. ມະຫາຈັດຕາຣີສະກະສູດ
໙. ກາຍະຄະຕາສະຕິສູດ
໘. ສະວິໂສທະນະສູດ
໔. ເສວິຕັບພາເສວິຕັບພະສູດ
໖. ອິຊິຄິລິສູດ
໘. ອານາປານັດສະຕິສູດ
໑໐. ສັງຂາຣູປະປັດຕິສູດ

ເກີດຂຶ້ນໃນມື້ເພັນ ໘ ມື້ເພັນ
ເມື່ອຄັ້ງທີ່ດວງຈັນບໍລິສຸດປາສະຈາກມົນທິນ
ພຣະຜູ້ມີພຣະພາກເຈົ້າຊົງຜາຣົບເປັນທຳອັນບໍ່ແມ່ນກິດຂອງພຣະອົງ
ລວມກັນຂຶ້ນເປັນວັກອັນສຳຄັນຊື່ວ່າອະນຸປະທະວັກທີ ໘
ມີພຣະທຳເທດສະໜາອັນປະເສີດທີ່ຊົບເປັນຈຳນວນຫຼາຍເສບແລ້ວ

# ໒. ສູນຍະຕະວັກ

## ໝວດວ່າດ້ວຍສູນຍະຕາ

## ໑. ຈູລະສູນຍະຕະສູດ

### ວ່າດ້ວຍສູນຍະຕາ ສູດນ້ອຍ

[໑໗໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ຜາສາດຂອງມິຄາຣະມາຕາ ໃນບຸບພາຣາມ ເຂດນະຄອນສາວັດຖີ ເມື່ອເວລາແລງ ທ່ານພຣະອານົນອອກຈາກທີ່ຫຼີກຫຼີກ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ນິຄົມຂອງເຈົ້າສາກະຍະຊື່ນະຄອນກະ ແຄວັນສັກກະ ໃນບ່ອນນັ້ນ ຂ້າພຣະອົງໄດ້ສະດັບຮັບມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນ ປັດຈຸບັນນີ້ ເຮົາຢູ່ດ້ວຍສູນຍະຕາວິຫານທຳ ສ່ວນຫຼາຍ ຂໍ້ນີ້ຂ້າພຣະອົງໄດ້ສະດັບມາດີແລ້ວ ຮັບມາດີແລ້ວ ໃສ່ໃຈໄວ້ດີແລ້ວ ຊົງຈຳໄວ້ດີແລ້ວບໍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖືກຕ້ອງ ອານົນ ຂໍ້ນັ້ນ ທ່ານສະດັບມາດີແລ້ວ ຮັບມາດີແລ້ວ ໃສ່ໃຈໄວ້ດີແລ້ວ ຊົງຈຳໄວ້ດີແລ້ວ ທັງແຕ່ກ່ອນແລະບັດນີ້ ເຮົາຢູ່ດ້ວຍສູນຍະຕາວິຫານທຳສ່ວນຫຼາຍ ປຽບຄື ຜາສາດຂອງມິຄາຣະມາຕາຫຼັງນີ້ ວ່າງຈາກຊ້າງ ງົວ ມ້າ ແລະ ລາ ວ່າງຈາກຄຳແລະເງິນ ວ່າງຈາກການຊຸມນຸມຂອງສະຕີແລະບຸຣຸດ ບໍ່ວ່າງຢູ່ແນວດຽວຄືພິກຂຸສົງທີ່ນັ້ນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ບໍ່ໃສ່ໃຈຄວາມສຳຄັນວ່າເຮືອນ ບໍ່ໃສ່ໃຈຄວາມສຳຄັນວ່າມະນຸດ ໃສ່ໃຈແຕ່ສິ່ງດຽວສະເພາະຄວາມສຳຄັນວ່າ ປ່າ ຈິດຂອງທ່ານຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນ ແລະນ້ອມໄປໃນຄວາມສຳຄັນວ່າ ປ່າ

ພິກຂຸນັ້ນ ຮູ້ແຈ້ງແນວນີ້ວ່າ "ໃນຄວາມສຳຄັນວ່າປ່ານີ້ ບໍ່ມີຄວາມກະວົນກະວາຍຍ້ອນອາໄສຄວາມສຳຄັນວ່າເຮືອນ ບໍ່ມີຄວາມກະວົນກະວາຍຍ້ອນອາໄສຄວາມສຳຄັນວ່າມະນຸດ ມີຢູ່ພຽງຄວາມກະວົນກະວາຍຍ້ອນອາໄສຄວາມສຳຄັນວ່າປ່າແນວດຽວ"

ຮູ້ແຈ້ງວ່າ "ຄວາມສຳຄັນນີ້ວ່າງຈາກຄວາມສຳຄັນວ່າເຮືອນ"

ຮູ້ແຈ້ງວ່າ "ຄວາມສຳຄັນນີ້ວ່າງຈາກຄວາມສຳຄັນວ່າມະນຸດ"

ຮູ້ແຈ້ງວ່າ "ບໍ່ວ່າງຢູ່ແນວດຽວ ຄື ຄວາມສຳຄັນວ່າປ່າທີ່ນັ້ນ" ດ້ວຍອາການແນວນີ້ ທ່ານຈຶ່ງພິຈາລະນາເຫັນຄວາມວ່າງນັ້ນ ດ້ວຍສິ່ງທີ່ບໍ່ມີຢູ່ໃນຄວາມສຳຄັນນັ້ນ

ຮູ້ແຈ້ງສິ່ງທີ່ເຫຼືອຢູ່ໃນຄວາມສຳຄັນນັ້ນວ່າ "ສິ່ງທີ່ຍັງມີຢູ່ນີ້ມີຢູ່"

ອານົນ ການກ້າວເຂົ້າສູ່ສູນຍະຕາ (ຄວາມວ່າງ) ຕາມຄວາມເປັນຈິງ ບໍ່ຄາດເຄື່ອນ ບໍລິສຸດຂອງພິກຂຸນັ້ນ ເປັນແນວນີ້

[໑໗໗] ອີກປະການໜຶ່ງ ພິກຂຸບໍ່ໃສ່ໃຈຄວາມສຳຄັນວ່າມະນຸດ ບໍ່ໃສ່ໃຈຄວາມສຳຄັນວ່າປ່າ ໃສ່ໃຈຢູ່ແນວດຽວ ຄື ຄວາມສຳຄັນວ່າແຜ່ນດິນທີ່ນັ້ນ ຈິດຂອງທ່ານຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນ ແລະ ນ້ອມໄປໃນຄວາມສຳຄັນວ່າແຜ່ນດິນ ປຽບຄື ໜັງງົວທີ່ເຂົາຂຶງດີແລ້ວດ້ວຍຫຼັກຕັ້ງຮ້ອຍ ເປັນຂອງປາສະຈາກຄວາມຫຍ່ອນຍານ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ບໍ່ໃສ່ໃຈເຖິງຄວາມລຸບ ໆ ໂນນ ໆ ແຫ່ງແຜ່ນດິນນີ້ເຊິ່ງມີແມ່ນ້ຳລຳທານ ເຕັມໄປດ້ວຍຕໍໜາມ ມີພູແລະພື້ນທີ່ບໍ່ສະໝ່ຳສະເໝີທັງໝົດ ໃສ່ໃຈຢູ່ແນວດຽວ ຄື ຄວາມສຳຄັນວ່າແຜ່ນດິນທີ່ນັ້ນ ຈິດຂອງທ່ານຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນ ແລະນ້ອມໄປໃນຄວາມສຳຄັນວ່າແຜ່ນດິນ

ພິກຂຸນັ້ນ ຮູ້ແຈ້ງແນວນີ້ວ່າ "ໃນຄວາມສຳຄັນວ່າແຜ່ນດິນນີ້ ບໍ່ມີຄວາມກະວົນກະວາຍຍ້ອນອາໄສຄວາມສຳຄັນວ່າ ມະນຸດ ບໍ່ມີຄວາມກະວົນກະວາຍຍ້ອນອາໄສຄວາມສຳຄັນວ່າປ່າ ມີຢູ່ພຽງຄວາມກະວົນກະວາຍຍ້ອນອາໄສຄວາມສຳຄັນວ່າແຜ່ນດິນແນວດຽວ"

ຮູ້ແຈ້ງວ່າ "ຄວາມສຳຄັນນີ້ ວ່າງ ຈາກຄວາມສຳຄັນວ່າ ມະນຸດ"

ຮູ້ແຈ້ງວ່າ "ຄວາມສຳຄັນນີ້ ວ່າງ ຈາກຄວາມສຳຄັນວ່າ ປ່າ"

ຮູ້ແຈ້ງວ່າ "ບໍ່ວ່າງຢູ່ແນວດຽວ ຄື ຄວາມສຳຄັນວ່າແຜ່ນດິນທີ່ນັ້ນ" ດ້ວຍອາການແນວນີ້ ທ່ານຈຶ່ງພິຈາລະນາເຫັນຄວາມວ່າງນັ້ນ ດ້ວຍສິ່ງທີ່ບໍ່ມີຢູ່ໃນຄວາມສຳຄັນນັ້ນ

ຮູ້ແຈ້ງສິ່ງທີ່ເຫຼືອຢູ່ໃນຄວາມສຳຄັນນັ້ນວ່າ "ສິ່ງທີ່ຍັງມີຢູ່ນີ້ມີຢູ່"

ອານົນ ການກ້າວເຂົ້າສູ່ສູນຍະຕາຕາມຄວາມເປັນຈິງ ບໍ່ຄາດເຄື່ອນ ບໍລິສຸດຂອງພິກຂຸນັ້ນ ເປັນແນວນີ້

[໑໗໘] ອີກປະການໜຶ່ງ ພິກຂຸບໍ່ໃສ່ໃຈຄວາມສຳຄັນວ່າປ່າ ບໍ່ໃສ່ໃຈຄວາມສຳຄັນວ່າແຜ່ນດິນ ໃສ່ໃຈຢູ່ແນວດຽວ ຄື ຄວາມສຳຄັນວ່າອາກາສານັນຈາຍະຕະນະທີ່ນັ້ນ ຈິດຂອງທ່ານຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນ ແລະ ນ້ອມໄປໃນຄວາມສຳຄັນວ່າ ອາກາສານັນຈາຍະຕະນະ

ພິກຂຸນັ້ນ ຮູ້ແຈ້ງແນວນີ້ວ່າ "ໃນຄວາມສຳຄັນວ່າອາກາສານັນຈາຍະຕະນະນີ້ ບໍ່ມີຄວາມ

ກະວົນກະວາຍຍ້ອນອາໄສຄວາມສຳຄັນວ່າປ່າ ບໍ່ມີຄວາມກະວົນກະວາຍຍ້ອນອາໄສຄວາມສຳຄັນວ່າແຜ່ນດິນ ມີຢູ່ພຽງຄວາມກະວົນກະວາຍຍ້ອນອາໄສຄວາມສຳຄັນວ່າ ອາກາສານັນຈາຍະຕະນະແນວດຽວ"

ຮູ້ແຈ້ງວ່າ "ຄວາມສຳຄັນນີ້ວ່າງຈາກຄວາມສຳຄັນວ່າປ່າ"

ຮູ້ແຈ້ງວ່າ "ຄວາມສຳຄັນນີ້ວ່າງຈາກຄວາມສຳຄັນວ່າແຜ່ນດິນທໍ່ນັ້ນ"

ຮູ້ແຈ້ງວ່າ "ບໍ່ວ່າງຢູ່ແນວດຽວ ຄື ຄວາມສຳຄັນວ່າອາກາສານັນຈາຍະຕະນະທໍ່ນັ້ນ" ດ້ວຍອາການແນວນີ້ ທ່ານຈຶ່ງພິຈາລະນາເຫັນຄວາມວ່າງນັ້ນ ດ້ວຍສິ່ງທີ່ບໍ່ມີຢູ່ໃນຄວາມສຳຄັນນັ້ນ

ຮູ້ແຈ້ງສິ່ງທີ່ເຫຼືອຢູ່ໃນຄວາມສຳຄັນນັ້ນວ່າ "ສິ່ງທີ່ຍັງມີຢູ່ນີ້ມີຢູ່"

ອານົນ ການກ້າວເຂົ້າສູ່ສູນຍະຕາຕາມຄວາມເປັນຈິງ ບໍ່ຄາດເຄື່ອນ ບໍລິສຸດ ຂອງພິກຂຸນັ້ນ ເປັນແນວນີ້

[໑໗໙] ອີກປະການໜຶ່ງ ພິກຂຸບໍ່ໃສ່ໃຈຄວາມສຳຄັນວ່າແຜ່ນດິນ ບໍ່ໃສ່ໃຈຄວາມສຳຄັນວ່າອາກາສານັນຈາຍະຕະນະ ໃສ່ໃຈຢູ່ແນວດຽວ ຄື ຄວາມສຳຄັນວ່າວິນຍານັນຈາຍະຕະນະທໍ່ນັ້ນ ຈິດຂອງທ່ານຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນ ແລະ ນ້ອມໄປໃນຄວາມສຳຄັນວ່າວິນຍານັນຈາຍະຕະນະ

ພິກຂຸນັ້ນ ຮູ້ແຈ້ງແນວນີ້ວ່າ "ໃນຄວາມສຳຄັນວ່າວິນຍານັນຈາຍະຕະນະນີ້ ບໍ່ມີຄວາມກະວົນກະວາຍຍ້ອນອາໄສຄວາມສຳຄັນວ່າ ແຜ່ນດິນ ບໍ່ມີຄວາມກະວົນກະວາຍຍ້ອນອາໄສຄວາມສຳຄັນວ່າ ອາກາສານັນຈາຍະຕະນະ ມີຢູ່ພຽງຄວາມກະວົນກະວາຍຍ້ອນອາໄສຄວາມສຳຄັນວ່າ ວິນຍານັນຈາຍະຕະນະແນວດຽວ"

ຮູ້ແຈ້ງວ່າ "ຄວາມສຳຄັນນີ້ວ່າງຈາກຄວາມສຳຄັນວ່າແຜ່ນດິນ"

ຮູ້ແຈ້ງວ່າ "ຄວາມສຳຄັນນີ້ວ່າງຈາກຄວາມສຳຄັນວ່າອາກາສານັນຈາຍະຕະນະ"

ຮູ້ແຈ້ງວ່າ "ບໍ່ວ່າງຢູ່ແນວດຽວ ຄື ຄວາມສຳຄັນວ່າວິນຍານັນຈາຍະຕະນະທໍ່ນັ້ນ" ດ້ວຍອາການແນວນີ້ ທ່ານຈຶ່ງພິຈາລະນາເຫັນຄວາມວ່າງນັ້ນດ້ວຍສິ່ງທີ່ບໍ່ມີຢູ່ໃນຄວາມສຳຄັນນັ້ນ

ຮູ້ແຈ້ງສິ່ງທີ່ເຫຼືອຢູ່ໃນຄວາມສຳຄັນນັ້ນວ່າ "ສິ່ງທີ່ຍັງມີຢູ່ນີ້ມີຢູ່"

ອານົນ ການກ້າວເຂົ້າສູ່ສູນຍະຕາຕາມຄວາມເປັນຈິງ ບໍ່ຄາດເຄື່ອນ ບໍລິສຸດ ຂອງພິກຂຸນັ້ນ ເປັນແນວນີ້

[໑໘໐] ອີກປະການໜຶ່ງ ພິກຂຸບໍ່ໃສ່ໃຈຄວາມສຳຄັນວ່າ ອາກາສານັນຈາຍະຕະນະ ບໍ່ໃສ່ໃຈຄວາມສຳຄັນວ່າ ວິນຍານັນຈາຍະຕະນະ ໃສ່ໃຈຢູ່ແນວດຽວ ຄື ຄວາມສຳຄັນວ່າອາກິນຈັນຍາ

ຍະຕະນະທີ່ນັ້ນ ຈິດຂອງທ່ານຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນ ແລະ ນ້ອມໄປໃນຄວາມສຳຄັນວ່າອາກິນຈັນຍາຍະຕະນະ

ພິກຂຸນັ້ນຮູ້ແຈ້ງແນວນີ້ວ່າ "ໃນຄວາມສຳຄັນວ່າອາກິນຈັນຍາຍະຕະນະນີ້ ບໍ່ມີຄວາມກະວົນກະວາຍຍ້ອນອາໄສຄວາມສຳຄັນວ່າອາກາສານັນຈາຍະຕະນະ ບໍ່ມີຄວາມກະວົນກະວາຍຍ້ອນອາໄສຄວາມສຳຄັນວ່າ ວິນຍານັນຈາຍະຕະນະ ມີຢູ່ພຽງຄວາມກະວົນກະວາຍຍ້ອນອາໄສຄວາມສຳຄັນວ່າອາກິນຈັນຍາຍະຕະນະແນວດຽວ"

ຮູ້ແຈ້ງວ່າ "ຄວາມສຳຄັນນີ້ວ່າງຈາກຄວາມສຳຄັນວ່າອາກາສານັນຈາຍະຕະນະ"

ຮູ້ແຈ້ງວ່າ "ຄວາມສຳຄັນນີ້ວ່າງຈາກຄວາມສຳຄັນວ່າວິນຍານັນຈາຍະຕະນະ"

ຮູ້ແຈ້ງວ່າ "ບໍ່ວ່າງຢູ່ແນວດຽວ ຄື ຄວາມສຳຄັນວ່າອາກິນຈັນຍາຍະຕະນະທີ່ນັ້ນ" ດ້ວຍອາການແນວນີ້ ທ່ານຈຶ່ງພິຈາລະນາເຫັນຄວາມວ່າງນັ້ນ ດ້ວຍສິ່ງທີ່ບໍ່ມີຢູ່ໃນຄວາມສຳຄັນນັ້ນ

ຮູ້ແຈ້ງສິ່ງທີ່ເຫຼືອຢູ່ໃນຄວາມສຳຄັນນັ້ນທີ່ຍັງມີຢູ່ວ່າມີຢູ່

ອານົນ ການກ້າວເຂົ້າສູ່ສູນຍະຕາຕາມຄວາມເປັນຈິງ ບໍ່ຄາດເຄື່ອນ ບໍລິສຸດ ຂອງພິກຂຸນັ້ນ ເປັນແນວນີ້

[໑໗໑] ອີກປະການໜຶ່ງ ພິກຂຸບໍ່ໃສ່ໃຈຄວາມສຳຄັນວ່າວິນຍານັນຈາຍະຕະນະ ບໍ່ໃສ່ໃຈຄວາມສຳຄັນວ່າອາກິນຈັນຍາຍະຕະນະ ໃສ່ໃຈຢູ່ແນວດຽວ ຄື ຄວາມສຳຄັນວ່າເນວະສັນຍານາສັນຍາຍະຕະນະທີ່ນັ້ນ ຈິດຂອງທ່ານຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນ ແລະນ້ອມໄປໃນຄວາມສຳຄັນວ່າເນວະສັນຍານາສັນຍາຍະຕະນະ

ພິກຂຸນັ້ນ ຮູ້ແຈ້ງແນວນີ້ວ່າ "ໃນຄວາມສຳຄັນວ່າ ເນວະສັນຍານາສັນຍາຍະຕະນະນີ້ ບໍ່ມີຄວາມກະວົນກະວາຍ ຍ້ອນອາໄສຄວາມສຳຄັນວ່າວິນຍານັນຈາຍະຕະນະ ບໍ່ມີຄວາມກະວົນກະວາຍຍ້ອນອາໄສຄວາມສຳຄັນວ່າ ອາກິນຈັນຍາຍະຕະນະ ມີຢູ່ພຽງຄວາມກະວົນກະວາຍຍ້ອນອາໄສຄວາມສຳຄັນວ່າ ເນວະສັນຍານາສັນຍາຍະຕະນະແນວດຽວ"

ຮູ້ແຈ້ງວ່າ "ຄວາມສຳຄັນນີ້ວ່າງຈາກຄວາມສຳຄັນວ່າວິນຍານັນຈາຍະຕະນະ"

ຮູ້ແຈ້ງວ່າ "ຄວາມສຳຄັນນີ້ວ່າງຈາກຄວາມສຳຄັນວ່າອາກິນຈັນຍາຍະຕະນະ"

ຮູ້ແຈ້ງວ່າ "ບໍ່ວ່າງຢູ່ແນວດຽວ ຄື ຄວາມສຳຄັນວ່າເນວະສັນຍານາສັນຍາຍະຕະນະທີ່ນັ້ນ" ດ້ວຍອາການແນວນີ້ ທ່ານຈຶ່ງພິຈາລະນາເຫັນຄວາມວ່າງນັ້ນ ດ້ວຍສິ່ງທີ່ບໍ່ມີຢູ່ໃນຄວາມສຳຄັນນັ້ນ

ຮູ້ແຈ້ງສິ່ງທີ່ເຫຼືອຢູ່ໃນຄວາມສຳຄັນນັ້ນວ່າ "ສິ່ງທີ່ຍັງມີຢູ່ນີ້ມີຢູ່"

ອານົນ ການກ້າວເຂົ້າສູ່ສູນຍະຕາຕາມຄວາມເປັນຈິງ ບໍ່ຄາດເຄື່ອນ ບໍລິສຸດ ຂອງພິກຂຸນັ້ນ ເປັນແນວນີ້

[໑໗໘] ອີກປະການໜຶ່ງ ພິກຂຸບໍ່ໃສ່ໃຈຄວາມສຳຄັນວ່າອາກິນຈັນຍາຍະຕະນະ ບໍ່ໃສ່ໃຈຄວາມສຳຄັນວ່າເນວະສັນຍານາສັນຍາຍະຕະນະ ໃສ່ໃຈຢູ່ແນວດຽວ ຄື ເຈໂຕສະມາທິ ອັນບໍ່ມີນິມິດ໑ທໍ່ນັ້ນ ຈິດຂອງທ່ານຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນ ແລະ ນ້ອມໄປໃນເຈໂຕສະມາທິອັນບໍ່ມີນິມິດ

ພິກຂຸນັ້ນຮູ້ແຈ້ງແນວນີ້ວ່າ "ໃນເຈໂຕສະມາທິນີ້ ບໍ່ມີຄວາມກະວົນກະວາຍຍ້ອນອາໄສຄວາມສຳຄັນວ່າອາກິນຈັນຍາຍະຕະນະ ບໍ່ມີຄວາມກະວົນກະວາຍຍ້ອນອາໄສຄວາມສຳຄັນວ່າເນວະສັນຍານາສັນຍາຍະຕະນະ ມີຢູ່ພຽງຄວາມກະວົນກະວາຍ ຄື ຄວາມເກີດແຫ່ງອາຍະຕະນະ ໖ ທີ່ອາໄສກາຍນີ້ທໍ່ນັ້ນ ຍ້ອນມີຊີວິດເປັນປັດໄຈ"

ຮູ້ແຈ້ງວ່າ "ຄວາມສຳຄັນນີ້ວ່າງຈາກຄວາມສຳຄັນວ່າອາກິນຈັນຍາຍະຕະນະ"

ຮູ້ແຈ້ງວ່າ "ຄວາມສຳຄັນນີ້ວ່າງຈາກຄວາມສຳຄັນວ່າເນວະສັນຍານາສັນຍາຍະຕະນະ"

ຮູ້ແຈ້ງວ່າ "ບໍ່ວ່າງຢູ່ແນວດຽວ ຄື ຄວາມເກີດແຫ່ງອາຍະຕະນະ ໖ ທີ່ອາໄສກາຍນີ້ທໍ່ນັ້ນ" ເຫດມີຊີວິດເປັນປັດໄຈ ດ້ວຍອາການແນວນີ້ ທ່ານຈຶ່ງພິຈາລະນາເຫັນຄວາມວ່າງນັ້ນດ້ວຍສິ່ງທີ່ບໍ່ມີຢູ່ໃນເຈໂຕສະມາທິນັ້ນ

ຮູ້ແຈ້ງສິ່ງທີ່ເຫຼືອຢູ່ໃນເຈໂຕສະມາທິນັ້ນວ່າ "ສິ່ງທີ່ຍັງມີຢູ່ນີ້ມີຢູ່"

ອານົນ ການກ້າວເຂົ້າສູ່ສູນຍະຕາຕາມຄວາມເປັນຈິງ ບໍ່ຄາດເຄື່ອນ ບໍລິສຸດ ຂອງພິກຂຸນັ້ນ ເປັນແນວນີ້

[໑໗໙] ອານົນ ອີກປະການໜຶ່ງ ພິກຂຸບໍ່ໃສ່ໃຈຄວາມສຳຄັນວ່າອາກິນຈັນຍາຍະຕະນະ ບໍ່ໃສ່ໃຈຄວາມສຳຄັນວ່າເນວະສັນຍານາສັນຍາຍະຕະນະ ໃສ່ໃຈຢູ່ແນວດຽວ ຄື ເຈໂຕສະມາທິອັນບໍ່ມີນິມິດທໍ່ນັ້ນ ຈິດຂອງທ່ານຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນ ແລະນ້ອມໄປໃນເຈໂຕສະມາທິອັນບໍ່ມີນິມິດ

ພິກຂຸນັ້ນຮູ້ແຈ້ງແນວນີ້ວ່າ "ເຈໂຕສະມາທິອັນບໍ່ມີນິມິດນີ້ ຍັງຖືກປັດໄຈປຸງແຕ່ງຈູງໃຈໄດ້ ແຕ່ສິ່ງທີ່ຖືກປັດໄຈປຸງແຕ່ງຈູງໃຈໄດ້ນັ້ນບໍ່ທ່ຽງ ມີຄວາມດັບໄປເປັນທຳມະດາ" ເມື່ອພິກຂຸນັ້ນຮູ້ຢູ່ແນວນີ້ເຫັນຢູ່ແນວນີ້ ຈິດຈຶ່ງລຸດພົ້ນຈາກກາມາສະຫວະ ພະວາສະວະ ແລະອະວິດຊາສະຫວະ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ "ລຸດພົ້ນແລ້ວ" ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນ ແລ້ວເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ພິກຂຸນັ້ນຮູ້ແຈ້ງແນວນີ້ວ່າ "ໃນຍານນີ້ບໍ່ມີຄວາມກະວົນກະວາຍຍ້ອນອາໄສກາມາສະຫວະ

ໃນຍານນີ້ບໍ່ມີຄວາມກະວົນກະວາຍຍ້ອນອາໄສພະວາສະວະ ໃນຍານນີ້ບໍ່ມີຄວາມກະວົນກະວາຍຍ້ອນອາໄສອະວິດຊາສະຫວະ ມີຢູ່ພຽງຄວາມກະວົນກະວາຍ ຄື ຄວາມເກີດແຫ່ງອາຍະຕະນະ ໖ ທີ່ອາໄສກາຍນີ້ທີ່ນັ້ນ ຍ້ອນມີຊີວິດເປັນປັດໄຈ"

ຮູ້ແຈ້ງວ່າ "ຄວາມສຳຄັນນີ້ວ່າງຈາກກາມາສະຫວະ"
ຮູ້ແຈ້ງວ່າ "ຄວາມສຳຄັນນີ້ວ່າງຈາກພະວາສະຫວະ"
ຮູ້ແຈ້ງວ່າ "ຄວາມສຳຄັນນີ້ວ່າງຈາກອະວິດຊາສະຫວະ"
ຮູ້ແຈ້ງວ່າ "ບໍ່ວ່າງຢູ່ແນວດຽວ ຄື ຄວາມເກີດແຫ່ງອາຍະຕະນະ ໖ ທີ່ອາໄສກາຍນີ້ທີ່ນັ້ນຍ້ອນມີຊີວິດເປັນປັດໄຈ" ດ້ວຍອາການແນວນີ້ ທ່ານຈຶ່ງພິຈາລະນາເຫັນຄວາມວ່າງນັ້ນດ້ວຍສິ່ງທີ່ບໍ່ມີຢູ່ໃນເຈໂຕສະມາທິນັ້ນ
ຮູ້ແຈ້ງສິ່ງທີ່ເຫຼືອຢູ່ໃນເຈໂຕສະມາທິນັ້ນວ່າ "ສິ່ງທີ່ຍັງມີຢູ່ນີ້ມີຢູ່"

ອານົນ ການກ້າວເຂົ້າສູ່ສູນຍະຕາຕາມຄວາມເປັນຈິງ ບໍ່ຄາດເຄື່ອນ ບໍລິສຸດປະເສີດຢ່າງຍິ່ງຂອງພິກຂຸນັ້ນ ເປັນແນວນີ້

[໑໙໔] ອານົນ ໃນອະດີດ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ເຂົ້າເຖິງສູນຍະຕາອັນບໍລິສຸດປະເສີດຢູ່ ສະມະນະ ຫຼື ພາມເຫຼົ່ານັ້ນທັງໝົດ ກໍໄດ້ເຂົ້າເຖິງ ສູນຍະຕາອັນບໍລິສຸດປະເສີດນີ້ທີ່ນັ້ນຢູ່

ໃນອະນາຄົດ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ຈັກເຂົ້າເຖິງສູນຍະຕາອັນບໍລິສຸດປະເສີດຢູ່ ສະມະນະຫຼືພາມເຫຼົ່ານັ້ນທັງໝົດ ກໍຈັກເຂົ້າເຖິງສູນຍະຕາອັນບໍລິສຸດປະເສີດນີ້ທີ່ນັ້ນຢູ່

ໃນປັດຈຸບັນ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ຍ່ອມເຂົ້າເຖິງສູນຍະຕາອັນບໍລິສຸດປະເສີດຢູ່ ສະມະນະຫຼືພາມເຫຼົ່ານັ້ນທັງໝົດ ຍ່ອມເຂົ້າເຖິງສູນຍະຕາອັນບໍລິສຸດປະເສີດນີ້ທີ່ນັ້ນຢູ່

ອານົນ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງສຶກສາແນວນີ້ວ່າ "ເຮົາຈັກເຂົ້າເຖິງສູນຍະຕາອັນບໍລິສຸດປະເສີດຢູ່"

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດພາສິດນີ້ແລ້ວ ທ່ານພຣະອານົນມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ຈູລະສູນຍະຕະສູດທີ ໑ ຈົບ**

# ໘. ມະຫາສູນຍະຕະສູດ

## ວ່າດ້ວຍສູນຍະຕາ ສູດໃຫຍ່

[໑໗໕] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ນິໂຄທາຣາມ ເຂດກຣຸງກະບິນລະພັດ ແຄວ້ນສັກກະ ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ສະເດັດເຂົ້າໄປບິນທະບາດໃນກຣຸງກະບິນລະພັດ ຊົງທ່ຽວບິນທະບາດໃນກຣຸງກະບິນລະພັດແລ້ວ ສະເດັດກັບຈາກບິນທະບາດ ພາຍຫຼັງສະເຫວີຍພຣະກະຍາຫານສຳເລັດແລ້ວ ຈຶ່ງສະເດັດເຂົ້າໄປສູ່ວິຫານຂອງເຈົ້າກາເຂມະກສາກະຍະ ເພື່ອຊົງພັກຜ່ອນໃນເວລາກາງເວັນ ສະໄໝນັ້ນ ໃນວິຫານຂອງເຈົ້າກາເຂມະກສາກະຍະ ມີເສນາສະນະທີ່ເຂົາຈັດໄວ້ເປັນຈຳນວນຫຼາຍ ພຣະຜູ້ມີພຣະພາກເຈົ້າ ທອດພຣະເນດເຫັນເສນາສະນະທີ່ເຂົາຈັດໄວ້ເປັນຈຳນວນຫຼາຍແລ້ວ ມີພຣະດຳຣິແບບນີ້ວ່າ “ໃນວິຫານຂອງເຈົ້າກາເຂມະກສາກະຍະ ເຂົາຈັດເສນາສະນະໄວ້ເປັນຈຳນວນຫຼາຍ ໃນບ່ອນນີ້ມີພິກຂຸຢູ່ຈຳນວນຫຼາຍແມ່ນບໍ?”

[໑໗໖] ສະໄໝນັ້ນ ທ່ານພຣະອານົນກັບພິກຂຸຈຳນວນຫຼາຍກຳລັງຕັດຫຍິບຈີວອນຢູ່ໃນວິຫານຂອງເຈົ້າຄະຕາຍະສາກະຍະ ເມື່ອເວລາແລງ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກທີ່ຫຼີບຫຼີກ ແລ້ວສະເດັດເຂົ້າໄປສູ່ວິຫານຂອງເຈົ້າຄະຕາຍະສາກະຍະ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ແລ້ວໄດ້ຮັບສັ່ງຮຽກທ່ານພຣະອານົນມາດ້ວຍຕັດວ່າ “ອານົນ ໃນວິຫານຂອງເຈົ້າກາເຂມະກະສາກະຍະ ເຂົາຈັດເສນາສະນະໄວ້ເປັນຈຳນວນຫຼາຍ ບ່ອນນັ້ນມີພິກຂຸຢູ່ຈຳນວນຫຼາຍແມ່ນບໍ?”

ທ່ານພຣະອານົນຂາບທູນວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ໃນວິຫານຂອງເຈົ້າກາເຂມະກະສາກະຍະນັ້ນ ມີພິກຂຸຢູ່ຈຳນວນຫຼາຍ ສະໄໝທີ່ເປັນຈີວອນການຂອງຂ້າພຣະອົງທັງຫຼາຍກໍກຳລັງດຳເນີນໄປຢູ່ ຂ້ານ້ອຍ”

“ອານົນ ພິກຂຸຜູ້ພໍໃຈການຄຸກຄີດ້ວຍໝູ່ຄະນະ ຍິນດີການຄຸກຄີດ້ວຍໝູ່ຄະນະ ປະກອບເລື້ອຍ ໆ ເຊິ່ງຄວາມຄຸກຄີດ້ວຍໝູ່ຄະນະ ພໍໃຈຄະນະ ຍິນດີຄະນະ ບັນເທີງຢູ່ໃນຄະນະ ບໍ່ງາມເລີຍ

ເປັນໄປບໍ່ໄດ້ທີ່ພິກຂຸຜູ້ພໍໃຈການຄຸກຄີດ້ວຍໝູ່ຄະນະ ຍິນດີການຄຸກຄີດ້ວຍໝູ່ຄະນະ

ປະກອບເລື້ອຍ ໆ ເຊິ່ງຄວາມຄຸກຄີດ້ວຍໝູ່ຄະນະ ພໍໃຈຄະນະ ຍິນດີຄະນະ ບັນເທີງຢູ່ໃນຄະນະ ຈັກເປັນຜູ້ໄດ້ເນກຂຳມະສຸກ[໔] ປະວິເວກສຸກ[໕] ອຸປະສະມະສຸກ[໖] ສຳໂພທິສຸກ[໗] ຕາມປາຖະໜາໄດ້ ໂດຍບໍ່ຍາກ ໂດຍບໍ່ລຳບາກ

ເປັນໄປໄດ້[໘]ທີ່ພິກຂຸຜູ້ຫຼີກອອກຈາກຄະນະ ຢູ່ຕາມລຳພັງຜູ້ດຽວ ເພິ່ງຫວັງເນກຂຳມະສຸກ ປະວິເວກສຸກ ອຸປະສະມະສຸກ ສຳໂພທິສຸກ ຈັກເປັນຜູ້ໄດ້ສຸກນັ້ນ ຕາມປາຖະໜາໄດ້ໂດຍບໍ່ຍາກ ໂດຍບໍ່ລຳບາກ

ເປັນໄປບໍ່ໄດ້ທີ່ພິກຂຸຜູ້ພໍໃຈການຄຸກຄີດ້ວຍໝູ່ຄະນະ ຍິນດີການຄຸກຄີດ້ວຍໝູ່ຄະນະ ປະກອບເລື້ອຍ ໆ ເຊິ່ງຄວາມຄຸກຄີດ້ວຍໝູ່ຄະນະ ພໍໃຈຄະນະ ຍິນດີຄະນະ ບັນເທີງຢູ່ໃນຄະນະ ຈັກບັນລຸເຈໂຕວິມຸດຕິກຸເຊິ່ງເກີດຂຶ້ນຕາມສະໄໝ໙ ອັນໜ້າຍິນດີ ຫຼືໂລກຸດຕະຣະມັກ ເຊິ່ງບໍ່ໄດ້ເກີດຂຶ້ນຕາມສະໄໝ໙ ອັນບໍ່ກຳເຣີບໄດ້

ເປັນໄປໄດ້ທີ່ພິກຂຸຜູ້ຫຼີກອອກຈາກຄະນະ ຢູ່ຕາມລຳພັງຜູ້ດຽວ ເພິ່ງຫວັງບັນລຸເຈໂຕວິມຸດຕິ ເຊິ່ງເກີດຂຶ້ນຕາມສະໄໝ ອັນໜ້າຍິນດີ ຫຼືໂລກຸດຕະຣະມັກ ເຊິ່ງບໍ່ໄດ້ເກີດຂຶ້ນຕາມສະໄໝ ອັນບໍ່ກຳເຣີບ

ອານົນ ເຮົາບໍ່ພິຈາລະນາເຫັນຮູບອື່ນແມ່ນແນວໜຶ່ງ ເຊິ່ງເປັນທີ່ບໍ່ເກີດໂສກະ (ຄວາມໂສກເສົ້າ) ປະຣິເທວະ (ຄວາມໄຫ້ຈົ່ມ) ທຸກ (ຄວາມບໍ່ສະບາຍກາຍ) ໂທມະນັດ (ຄວາມບໍ່ສະບາຍໃຈ) ແລະ ອຸປາຍາດ (ຄວາມຄັບແຄ້ນໃຈ) ຍ້ອນຮູບຕາມທີ່ບຸກຄົນກຳໜັດຍິນດີກັນແລ້ວຜັນແປແລະເປັນແນວອື່ນເລີຍ

[໑໗໗] ອານົນ ກໍວິຫານທຳນີ້ແລທີ່ຕະຖາຄົດຕັດສະຣູ້ແລ້ວໃນບ່ອນນັ້ນຄື ຕະຖາຄົດ ເຂົ້າສູນຍະຕາໃນພາຍໃນ ຍ້ອນບໍ່ໃສ່ໃຈນິມິດທັງປວງຢູ່ ຖ້າພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ເດຍຣະຖີ ສາວົກເດຍຣະຖີ ເຂົ້າມາຫາຕະຖາຄົດຜູ້ມີໄຊກ ຢູ່ດ້ວຍວິຫານທຳນີ້ໃນບ່ອນນັ້ນ ຕະຖາຄົດຍ່ອມມີຈິດນ້ອມໄປໃນວິເວກ ອຽງໄປໃນວິເວກ ໂອນໄປໃນວິເວກ ຫຼີກອອກແລ້ວ ຍິນດີຍິ່ງແລ້ວໃນເນກຂຳມະ ເປັນຜູ້ສິ້ນສຸດ ຈາກທຳເປັນທີ່ຕັ້ງແຫ່ງອາສະວະໂດຍປະການທັງປວງ ເປັນຜູ້ທຳການເຈລະຈາທີ່ກ່ຽວເນື່ອງດ້ວຍການຊັກຊວນທໍ່ນັ້ນ ໃນບໍລິສັດນັ້ນໂດຍແທ້

ອານົນ ຍ້ອນເຫດນັ້ນ ຖ້າພິກຂຸ ແມ່ນຫວັງວ່າ "ເຮົາເພິ່ງເຂົ້າສູນຍະຕາໃນພາຍໃນຢູ່" ພິກຂຸນັ້ນ ເພິ່ງຕັ້ງຈິດໄວ້ໃນພາຍໃນ ເຮັດຈິດໃຫ້ສະຫງົບ ເຮັດຈິດໃຫ້ມີທຳເອກຜຸດຂຶ້ນ ຕັ້ງຈິດໃຫ້ໝັ້ນ

[໑໗໘] ພິກຂຸຕັ້ງຈິດໄວ້ໃນພາຍໃນ ເຮັດຈິດໃຫ້ສະຫງົບ ເຮັດຈິດໃຫ້ມີທຳເອກຜຸດຂຶ້ນ ຕັ້ງ

ຈິດໃຫ້ໝັ້ນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ ຯລຯ ບັນລຸທຸຕິຍະຊານ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸຈະຕຸດຖະຊານ ຯລຯ

ພິກຂຸຕັ້ງຈິດໄວ້ໃນພາຍໃນ ເຮັດຈິດໃຫ້ສະງົບ ເຮັດຈິດໃຫ້ມີທຳເອກຜຸດຂຶ້ນ ຕັ້ງຈິດໃຫ້ໝັ້ນ ເປັນແນວນີ້

ພິກຂຸນັ້ນ ໃສ່ໃຈສູນຍະຕາໃນພາຍໃນ ເມື່ອທ່ານໃສ່ໃຈສູນຍະຕາໃນພາຍໃນ ຈິດຈຶ່ງບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນ ແລະ ບໍ່ນ້ອມໄປໃນສູນຍະຕາໃນພາຍໃນ ເມື່ອເປັນເຊັ່ນນັ້ນພິກຂຸຍ່ອມຮູ້ແຈ້ງສູນຍະຕານັ້ນ ທີ່ມີຢູ່ແນວນີ້ວ່າ “ເມື່ອເຮົາໃສ່ໃຈສູນຍະຕາໃນພາຍໃນ ຈິດຈຶ່ງບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນ ແລະ ບໍ່ນ້ອມໄປໃນສູນຍະຕາໃນພາຍໃນ”

ພິກຂຸນັ້ນ ຊື່ວ່າ ເປັນຜູ້ມີສຳປະຊັນຍະໃນສູນຍະຕາໃນພາຍໃນນັ້ນ ດ້ວຍອາການແນວນີ້
ພິກຂຸນັ້ນ ໃສ່ໃຈສູນຍະຕາໃນພາຍນອກ ຯລຯ
ພິກຂຸນັ້ນ ໃສ່ໃຈສູນຍະຕາໃນພາຍໃນແລະໃນພາຍນອກ ຯລຯ

ພິກຂຸນັ້ນ ໃສ່ໃຈອາເນນຊະສະມາບັດ ເມື່ອທ່ານໃສ່ໃຈອາເນນຊະສະມາບັດ ຈິດຈຶ່ງບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນ ແລະ ບໍ່ນ້ອມໄປໃນອາເນນຊະສະມາບັດ ເມື່ອເປັນເຊັ່ນນັ້ນພິກຂຸຍ່ອມຮູ້ແຈ້ງອາເນນຊະສະມາບັດນັ້ນທີ່ມີຢູ່ແນວນີ້ວ່າ “ເມື່ອເຮົາໃສ່ໃຈອາເນນຊະສະມາບັດຈິດຈຶ່ງບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນ ແລະ ບໍ່ນ້ອມໄປໃນອາເນນຊະສະມາບັດ”

ພິກຂຸນັ້ນ ເປັນຜູ້ມີສຳປະຊັນຍະ໌ໃນອາເນນຊະສະມາບັດນັ້ນໄດ້ ດ້ວຍອາການແນວນີ້

ພິກຂຸນັ້ນ ຕັ້ງຈິດໄວ້ໃນພາຍໃນ ເຮັດຈິດໃຫ້ສະງົບ ເຮັດຈິດໃຫ້ມີທຳເອກຜຸດຂຶ້ນ ຕັ້ງຈິດໃຫ້ໝັ້ນໃນສະມາທິນິມິດໃນເບື້ອງຕົ້ນນັ້ນແລ ພິກຂຸນັ້ນ ໃສ່ໃຈສູນຍະຕາໃນພາຍໃນ ເມື່ອທ່ານໃສ່ໃຈສູນຍະຕາໃນພາຍໃນ ຈິດຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນ ແລະ ນ້ອມໄປໃນສູນຍະຕາໃນພາຍໃນ ເມື່ອເປັນເຊັ່ນນັ້ນ ພິກຂຸຍ່ອມຮູ້ແຈ້ງສູນຍະຕານັ້ນທີ່ມີຢູ່ແນວນີ້ວ່າ “ເມື່ອເຮົາໃສ່ໃຈສູນຍະຕາໃນພາຍໃນ ຈິດຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນ ແລະ ນ້ອມໄປໃນສູນຍະຕາໃນພາຍໃນ”

ພິກຂຸນັ້ນ ຊື່ວ່າ ເປັນຜູ້ມີສຳປະຊັນຍະໃນສູນຍະຕາໃນພາຍໃນນັ້ນ ດ້ວຍອາການແນວນີ້
ພິກຂຸນັ້ນ ໃສ່ໃຈສູນຍະຕາໃນພາຍນອກ ຯລຯ
ພິກຂຸນັ້ນ ໃສ່ໃຈສູນຍະຕາໃນພາຍໃນແລະໃນພາຍນອກ ຯລຯ

ພິກຂຸນັ້ນ ໃສ່ໃຈອາເນນຊະສະມາບັດ ເມື່ອທ່ານໃສ່ໃຈອາເນນຊະສະມາບັດ ຈິດຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນ ແລະ ນ້ອມໄປໃນອາເນນຊະສະມາບັດ ເມື່ອເປັນເຊັ່ນນັ້ນ ພິກຂຸຍ່ອມຮູ້ແຈ້ງອາເນຍະຊະສະມາບັດນັ້ນ ທີ່ມີຢູ່ແນວນີ້ວ່າ "ເມື່ອເຮົາໃສ່ໃຈອາເນນຊະສະມາບັດ ຈິດຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນ ແລະນ້ອມໄປໃນອາເນນຊະສະມາບັດ"

ພິກຂຸນັ້ນ ຊື່ວ່າ ເປັນຜູ້ມີສຳປະຊັນຍະໃນອາເນນຊະສະມາບັດ ດ້ວຍອາການແນວນີ້

[໑໗໙] ອານົນ ຫາກເມື່ອພິກຂຸນັ້ນ ຢູ່ດ້ວຍວິຫານທຳແນວນີ້ ຈິດຍ່ອມນ້ອມໄປ ເພື່ອການຍ່າງຈົງກົມ ພິກຂຸນັ້ນຈຶ່ງຍ່າງຈົງກົມດ້ວຍຫວັງວ່າ "ບາບອະກຸສົນທຳ ຄື ອະພິດຊາແລະໂທມະນັດ ຈັກຄອບງຳເຮົາຜູ້ຍ່າງຈົງກົມຢູ່ແນວນີ້ບໍ່ໄດ້"

ພິກຂຸນັ້ນ ຊື່ວ່າ ເປັນຜູ້ມີສຳປະຊັນຍະໃນການຍ່າງຈົງກົມນັ້ນ ດ້ວຍອາການແນວນີ້ຫາກເມື່ອພິກຂຸນັ້ນ ຢູ່ດ້ວຍວິຫານທຳນີ້ ຈິດຍ່ອມນ້ອມໄປເພື່ອການຢືນ ພິກຂຸນັ້ນ ຈຶ່ງຢືນດ້ວຍຫວັງວ່າ "ບາບອະກຸສົນທຳຄືອະພິດຊາແລະໂທມະນັດ ຈັກຄອບງຳເຮົາຜູ້ຢືນຢູ່ແລ້ວແນວນີ້ບໍ່ໄດ້"

ພິກຂຸນັ້ນ ຊື່ວ່າ ເປັນຜູ້ມີສຳປະຊັນຍະໃນການຢືນນັ້ນ ດ້ວຍອາການແນວນີ້ຫາກເມື່ອພິກຂຸນັ້ນ ຢູ່ດ້ວຍວິຫານທຳນີ້ ຈິດຍ່ອມນ້ອມໄປເພື່ອການນັ່ງ ພິກຂຸນັ້ນ ຈຶ່ງນັ່ງດ້ວຍຫວັງວ່າ "ບາບອະກຸສົນທຳ ຄື ອະພິດຊາແລະໂທມະນັດ ຈັກຄອບງຳເຮົາຜູ້ນັ່ງຢູ່ແລ້ວແນວນີ້ບໍ່ໄດ້"

ພິກຂຸນັ້ນ ຊື່ວ່າ ເປັນຜູ້ມີສຳປະຊັນຍະໃນການນັ່ງນັ້ນ ດ້ວຍອາການແນວນີ້ຫາກເມື່ອພິກຂຸນັ້ນ ຢູ່ດ້ວຍວິຫານທຳນີ້ ຈິດຍ່ອມນ້ອມໄປເພື່ອການນອນ ພິກຂຸນັ້ນ ຈຶ່ງນອນດ້ວຍຫວັງວ່າ "ບາບອະກຸສົນທຳຄືອະພິດຊາ ແລະ ໂທມະນັດ ຈັກຄອບງຳເຮົາຜູ້ນອນຢູ່ແນວນີ້ບໍ່ໄດ້"

ພິກຂຸນັ້ນ ຊື່ວ່າ ເປັນຜູ້ມີສຳປະຊັນຍະໃນການນອນນັ້ນ ດ້ວຍອາການແນວນີ້

ຫາກເມື່ອພິກຂຸນັ້ນຢູ່ດ້ວຍວິຫານທຳນີ້ ຈິດຍ່ອມນ້ອມໄປເພື່ອການເວົ້າ ທ່ານໃສ່ໃຈວ່າ "ເຮົາຈັກບໍ່ເວົ້າເລື້ອງທັງຫຼາຍເຫຼົ່ານີ້ ຄື ເລື້ອງພຣະຣາຊາ ເລື້ອງໂຈນ ເລື້ອງມະຫາອຳມາດ ເລື້ອງກອງທັບ ເລື້ອງໄພ ເລື້ອງການຮົບ ເລື້ອງເຂົ້າ ເລື້ອງນ້ຳ ເລື້ອງຜ້າ ເລື້ອງບ່ອນນອນ ເລື້ອງພວງດອກໄມ້ ເລື້ອງຂອງຫອມ ເລື້ອງຍາດ ເລື້ອງຍານ ເລື້ອງເຮືອນ ເລື້ອງນິຄົມ ເລື້ອງເມືອງ ເລື້ອງຊົນນະບົດ ເລື້ອງສະຕີ ເລື້ອງຄົນກ້າຫານ ເລື້ອງຮ່ອມ ເລື້ອງທ່ານ້ຳ ເລື້ອງຄົນທີ່ລ່ວງລັບໄປແລ້ວ ເລື້ອງຕ່າງ ໆ ເລື້ອງໂລກ ເລື້ອງທະເລ ເລື້ອງຄວາມຈະເລີນ ແລະຄວາມເສື່ອມ ເຊິ່ງເປັນເລື້ອງຊົ່ວຊາມ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ແລະ ເພື່ອນິບພານ

ພິກຂຸນັ້ນ ຊື່ວ່າ ເປັນຜູ້ມີສຳປະຊັນຍະໃນການເວົ້ານັ້ນ ດ້ວຍອາການແນວນີ້

ພິກຂຸນັ້ນ ໃສ່ໃຈວ່າ "ເຮົາຈັກເວົ້າເລື້ອງທັງຫຼາຍເລົ່ານີ້ ຄື ເລື້ອງຄວາມມັກໜ້ອຍ ເລື້ອງຄວາມສັນໂດດ ເລື້ອງຄວາມສະຫງັດ ເລື້ອງຄວາມບໍ່ຄຸກຄີກັນ ເລື້ອງການຜາຮົບຄວາມພຽນ ເລື້ອງສິນ ເລື້ອງສະມາທິ ເລື້ອງປັນຍາ ເລື້ອງວິມຸດຕິ ເລື້ອງວິມຸດຕິຍານທັດສະນະ" ເຊິ່ງເປັນເລື້ອງຂັດເກົາກິເລດຢ່າງຍິ່ງ ເປັນສັບປາຍະແກ່ຄວາມເປັນໄປແຫ່ງຈິດ ເປັນໄປເພື່ອຄວາມເບື່ອໜ່າຍໂດຍສ່ວນດຽວ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ແລະເພື່ອນິບພານ

ພິກຂຸນັ້ນ ຊື່ວ່າ ເປັນຜູ້ມີສຳປະຊັນຍະໃນການເວົ້ານັ້ນ ດ້ວຍອາການແນວນີ້

ຫາກເມື່ອພິກຂຸນັ້ນ ຢູ່ດ້ວຍວິຫານທຳນີ້ ຈິດຍ່ອມນ້ອມໄປເພື່ອການນຶກ ພິກຂຸນັ້ນໃສ່ໃຈວ່າ "ເຮົາຈັກບໍ່ນຶກໃນວິຕົກປານນີ້ ຄື ກາມວິຕົກ (ຄວາມນຶກໃນກາມ) ພະຍາບາດວິຕົກ (ຄວາມນຶກໃນພະຍາບາດ) ວິຫິງສາວິຕົກ (ຄວາມນຶກໃນການບຽດບຽນ)" ເຊິ່ງເປັນວິຕົກຊົ່ວຊາມ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ແລະເພື່ອນິບພານ

ພິກຂຸນັ້ນ ຊື່ວ່າ ເປັນຜູ້ມີສຳປະຊັນຍະໃນການນຶກນັ້ນ ດ້ວຍອາການແນວນີ້

ພິກຂຸນັ້ນ ໃສ່ໃຈວ່າ "ເຮົາຈັກນຶກໃນວິຕົກປານນີ້ ຄື ເນກຂັມມະວິຕົກ (ຄວາມນຶກ ທີ່ຈະອອກຈາກກາມ) ອະພະຍາບາດວິຕົກ (ຄວາມນຶກໃນການບໍ່ພະຍາບາດ) ອະວິຫິງສາວິຕົກ (ຄວາມນຶກໃນການບໍ່ບຽດບຽນ)" ເຊິ່ງເປັນວິຕົກຂອງພຣະອະຣິຍະ ເປັນເຄື່ອງນຳອອກ ທີ່ນຳອອກເພື່ອຄວາມສິ້ນທຸກ ໂດຍຖືກຕ້ອງແກ່ບຸກຄົນຜູ້ເຮັດຕາມ

ພິກຂຸນັ້ນ ຊື່ວ່າ ເປັນຜູ້ມີສຳປະຊັນຍະໃນການນຶກນັ້ນ ດ້ວຍອາການແນວນີ້

[໑໙໐] ອານົນ ກາມມະຄຸນ ໕ ປະການນີ້

ກາມມະຄຸນ ໕ ປະການ ອັນໃດແດ່ ຄື

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ
໒. ສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ
໓. ກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ
໔. ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ
໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ
ອານົນ ກາມມະຄຸນ ໕ ປະການນີ້

ພິກຂຸເພິ່ງພິຈາລະນາຈິດຂອງຕົນເລື້ອຍ ໆ ວ່າ "ຂໍ້ທີ່ຈິດຟຸ້ງຂື້ນພາຍໃນຍ້ອນກາມມະຄຸນ ໕ ນີ້ ເຊິ່ງເກີດຂື້ນໃນກາມມະຄຸນແນວໃດແນວໜຶ່ງ ຫຼືໃນອາຍະຕະນະແນວໃດແນວໜຶ່ງ ມີຢູ່ແກ່ເຮົາຫຼືບໍ່?" ຫາກພິກຂຸພິຈາລະນາຢູ່ ຮູ້ແຈ້ງແນວນີ້ວ່າ "ຂໍ້ທີ່ຈິດຟຸ້ງຂື້ນໃນກາມມະຄຸນ ໕ ນີ້ເຊິ່ງເກີດຂື້ນໃນກາມມະຄຸນແນວໃດແນວໜຶ່ງ ຫຼື ໃນອາຍະຕະນະແນວໃດແນວໜຶ່ງ ມີຢູ່ແກ່ເຮົາ" ເມື່ອເປັນເຊັ່ນນັ້ນ ພິກຂຸຍ່ອມຮູ້ແຈ້ງຂໍ້ທີ່ຈິດຟຸ້ງຂື້ນນັ້ນ ແນວນີ້ວ່າ "ສັມທະຣາຄະ ໃນກາມມະຄຸນ ໕ ນີ້ ເຮົາຍັງລະບໍ່ໄດ້"

ພິກຂຸນັ້ນ ຊື່ວ່າ ເປັນຜູ້ມີສຳປະຊັນຍະໃນສັມທະຣາຄະໃນກາມມະຄຸນ ໕ ນີ້ ທີ່ຍັງລະບໍ່ໄດ້ນັ້ນ ດ້ວຍອາການແນວນີ້

ແຕ່ຖ້າພິກຂຸພິຈາລະນາຢູ່ຮູ້ແຈ້ງແນວນີ້ວ່າ "ຂໍ້ທີ່ຈິດຟຸ້ງຂື້ນພາຍໃນຍ້ອນກາມມະຄຸນ ໕ ນີ້ເຊິ່ງເກີດຂື້ນໃນກາມມະຄຸນແນວໃດແນວໜຶ່ງ ຫຼື ໃນອາຍະຕະນະແນວໃດແນວໜຶ່ງບໍ່ມີແກ່ເຮົາເລີຍ" ເມື່ອເປັນເຊັ່ນນັ້ນ ພິກຂຸຍ່ອມຮູ້ຂໍ້ທີ່ຈິດຟຸ້ງຂື້ນນັ້ນ ແນວນີ້ວ່າ "ສັມທະຣາຄະໃນກາມມະຄຸນ ໕ ນີ້ ເຮົາລະໄດ້ແລ້ວ"

ພິກຂຸນັ້ນ ຊື່ວ່າ ເປັນຜູ້ມີສຳປະຊັນຍະໃນສັມທະຣາຄະໃນກາມມະຄຸນ ໕ ນີ້ ທີ່ລະໄດ້ແລ້ວນັ້ນ ດ້ວຍອາການແນວນີ້

[໑໘໑] ອານົນ ອຸປາທານຂັນ ໕ ນີ້ ເປັນທຳທີ່ພິກຂຸຜູ້ພິຈາລະນາເຫັນທັງຄວາມເກີດແລະຄວາມດັບວ່າ "ແນວນີ້ຮູບ ແນວນີ້ຄວາມເກີດແຫ່ງຮູບ ແນວນີ້ຄວາມດັບແຫ່ງຮູບ

ແນວນີ້ເວທະນາ ฯລฯ
ແນວນີ້ສັນຍາ ฯລฯ
ແນວນີ້ສັງຂານ ฯລฯ
ແນວນີ້ວິນຍານ ແນວນີ້ຄວາມເກີດແຫ່ງວິນຍານ ແນວນີ້ຄວາມດັບແຫ່ງວິນຍານ"

ພິກຂຸນັ້ນ ຜູ້ພິຈາລະນາເຫັນທັງຄວາມເກີດແລະຄວາມດັບໃນອຸປາທານຂັນ ໕ ນີ້ຢູ່ ຍ່ອມລະອັດສະມິມານະໃນອຸປາທານຂັນ ໕ ໄດ້ ເມື່ອເປັນເຊັ່ນນັ້ນ ພິກຂຸຍ່ອມຮູ້ແຈ້ງ

ອັດສະມິມານະທີ່ລະໄດ້ແລ້ວນັ້ນ ແນວນີ້ວ່າ "ອັດສະມິມານະໃນອຸປາທານຂັນ ໕ ນີ້ ເຮົາລະໄດ້ແລ້ວ"

ພິກຂຸນັ້ນ ຊື່ວ່າ ເປັນຜູ້ມີສຳປະຊັນຍະໃນອັດສະມິມານະໃນອຸປາທານຂັນ ໕ ນີ້ ທີ່ລະໄດ້ແລ້ວນັ້ນ ດ້ວຍອາການແນວນີ້

ທຳເຫຼົ່ານີ້ ເນື່ອງມາຈາກກຸສົນໂດຍສ່ວນດຽວ ໄກຈາກຂ້າເສິກ ເປັນໂລກຸຕຕະຣະ ອັນມານຜູ້ມີບາບຢັ່ງລົງບໍ່ໄດ້

ອານົນ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ສາວົກພິຈາລະນາເຫັນອຳນາດປະໂຫຍດອັນໃດ ຈຶ່ງຄວນຕິດຕາມສາດສະດາຢ່າງໃກ້ຊິດ”

“ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ມີພຣະຜູ້ມີພຣະພາກເຈົ້າເປັນທີ່ເພິ່ງ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ສະເພາະພຣະຜູ້ມີພຣະພາກເຈົ້າທໍ່ນັ້ນທີ່ຈະຊົງອະທິບາຍເນື້ອຄວາມແຫ່ງພຣະພາສິດນັ້ນໃຫ້ແຈ້ງຊັດໄດ້ ພິກຂຸທັງຫຼາຍຟັງຈາກພຣະຜູ້ມີພຣະພາກເຈົ້າແລ້ວຈັກຊົງຈຳໄວ້”

[໑໘໘] “ອານົນ ສາວົກບໍ່ຄວນຕິດຕາມສາດສະດາພຽງເພື່ອຟັງສຸຕະ ເຄີຍຍະ ແລະເວີຍຍາກະຣະນະ ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນທຳທັງຫຼາຍ ອັນທ່ານທັງຫຼາຍສະດັບ ຊົງຈຳ ຄ່ອງປາກ ເພ່ງພິນິດດ້ວຍຈິດ ຮູ້ແຈ້ງແທງຕະຫຼອດດີແລ້ວ ສິ້ນການຊ້າດົນ ແຕ່ສາວົກກໍຄວນຕິດຕາມສາດສະດາຢ່າງໃກ້ຊິດ ເພື່ອຟັງເລື້ອງປານນີ້ ຄື ເລື້ອງຄວາມມັກໜ້ອຍ ເລື້ອງຄວາມສັນໂດດ ເລື້ອງຄວາມສະຫງັດ ເລື້ອງຄວາມບໍ່ຄຸກຄີກັນ ເລື້ອງການຜາຣົບຄວາມພຽນ ເລື້ອງສິນ ເລື້ອງສະມາທິ ເລື້ອງປັນຍາ ເລື້ອງວິມຸດຕິ ເລື້ອງວິມຸດຕິຍານທັດສະນະ ເຊິ່ງເປັນເລື້ອງຂັດເກົາກິເລດຢ່າງຍິ່ງ ເປັນສັບປາຍະແກ່ຄວາມເປັນໄປແຫ່ງຈິດ ເປັນໄປເພື່ອຄວາມເບື່ອໜ່າຍໂດຍສ່ວນດຽວ ເພື່ອຄາຍກຳໜັດ ເພື່ອດັບເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ແລະ ເພື່ອນິບພານ

ອານົນ ເມື່ອເປັນເຊັ່ນນັ້ນ ອຸປັດທະວະຂອງອາຈານຈຶ່ງມີໄດ້ ເມື່ອເປັນເຊັ່ນນັ້ນ ອຸປັດທະວະຂອງສິດຈຶ່ງມີໄດ້ ເມື່ອເປັນເຊັ່ນນັ້ນ ອຸປັດທະວະຂອງຜູ້ປະພຶດພົມມະຈັນຈຶ່ງມີໄດ້

[໑໘໙] ອຸປັດທະວະຂອງອາຈານ ເປັນແນວໃດ?

ຄື ສາດສະດາລາງຄົນໃນໂລກນີ້ ພັກຢູ່ໃນເສນາສະນະອັນງຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູ ຊອກເຂົາ ຖໍ້າ ປ່າຊ້າ ປ່າຮົກ ກາງແຈ້ງ ແລະ ກອງເຟືອງ ເມື່ອສາດສະດານັ້ນຫຼີກອອກຢູ່ແນວນັ້ນ ພາມແລະຄະຫະບໍດີ ຊາວນິຄົມແລະຊາວຊົນນະບົດ ຈະພາກັນເຂົ້າໄປຫາ ເມື່ອພາມແລະຄະຫະບໍດີ ຊາວນິຄົມແລະຊາວຊົນນະບົດ ພາກັນເຂົ້າໄປຫາແລ້ວ ສາດສະດານັ້ນຍ່ອມຍິນ

ດີຄວາມໝົກມຸ້ນ ເຖິງຄວາມຢາກໄດ້ ຈະວຽນກັບມາເພື່ອຄວາມເປັນຜູ້ມັກຫຼາຍ ສາດສະດານີ້ເຮົາ ຮຽກວ່າອາຈານມີອຸປັດທະວະ ດ້ວຍອຸປັດທະວະຂອງອາຈານ ບາບອະກຸສົນທຳອັນເສົ້າໝອງ ເປັນເຫດເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີທຸກເປັນວິບາກ ເປັນທີ່ຕັ້ງແຫ່ງຊາດ ຊະຣາ ແລະມໍລະນະຕໍ່ໄປ ກໍໄດ້ຂ້າສາດສະດານັ້ນ

ອານົນ ອຸປັດທະວະຂອງອາຈານ ເປັນແນວນີ້

[໑໘໔] ອຸປັດທະວະຂອງສິດ ເປັນແນວໃດ?

ຄື ສາວົກຂອງສາດສະດານັ້ນ ເມື່ອເພີ່ມພູນຄວາມສະຫງັດຕາມສາດສະດານັ້ນ ຈຶ່ງພັກຢູ່ ໃນເສນາສະນະອັນງຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູ ເງື້ອມຜາ ຖ້ຳ ປ່າຊ້າ ປ່າຮົກ ກາງແຈ້ງ ແລະກອງເຟືອງ ເມື່ອສາວົກນັ້ນຫຼີກອອກຢູ່ແນວນັ້ນ ພາມແລະຄະຫະບໍດີ ຊາວນິຄົມແລະຊາວ ຊົນນະບົດ ຈະພາກັນເຂົ້າໄປຫາ ເມື່ອພາມແລະຄະຫະບໍດີ ຊາວນິຄົມແລະຊາວຊົນນະບົດພາ ກັນເຂົ້າໄປຫາແລ້ວ ສາວົກນັ້ນຍ່ອມຍິນດີຄວາມໝົກມຸ້ນ ເຖິງຄວາມຢາກໄດ້ ຈະວຽນກັບມາເພື່ອ ຄວາມເປັນຜູ້ມັກຫຼາຍ ສາວົກນີ້ເຮົາຮຽກວ່າສິດມີອຸປັດທະວະ ດ້ວຍອຸປັດທະວະຂອງສິດ ບາບອະ ກຸສົນທຳອັນເສົ້າໝອງ ເປັນເຫດເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີທຸກເປັນວິບາກ ເປັນ ທີ່ຕັ້ງແຫ່ງຊາດ ຊະຣາແລະມໍລະນະຕໍ່ໄປ ກໍໄດ້ຂ້າສາວົກນັ້ນ

ອານົນ ອຸປັດທະວະຂອງສິດ ເປັນແນວນີ້

[໑໘໕] ອຸປັດທະວະຂອງຜູ້ປະພຶດພົມມະຈັນ ເປັນແນວໃດ?

ຄື ຕະຖາຄົດອຸບັດຂຶ້ນມາໃນໂລກນີ້ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍຕົນເອງໂດຍ ຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນ ເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ຕະຖາຄົດນັ້ນຍ່ອມພັກຢູ່ໃນເສນາສະນະອັນງຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູ ຊອກເຂົາ ຖ້ຳ ປ່າຊ້າ ປ່າຮົກ ກາງແຈ້ງ ແລະ ກອງເຟືອງ ເມື່ອຕະຖາຄົດນັ້ນຫຼີກ ອອກຢູ່ແນວນັ້ນ ພາມແລະຄະຫະບໍດີ ຊາວນິຄົມແລະຊາວຊົນນະບົດ ຈະພາກັນເຂົ້າໄປຫາ ເມື່ອ ພາມແລະຄະຫະບໍດີ ຊາວນິຄົມແລະຊາວຊົນນະບົດ ພາກັນເຂົ້າໄປຫາແລ້ວ ຕະຖາຄົດນັ້ນຍ່ອມ ບໍ່ຍິນດີຄວາມໝົກມຸ້ນ ບໍ່ເຖິງຄວາມຢາກໄດ້ ບໍ່ວຽນມາເພື່ອຄວາມເປັນຜູ້ມັກຫຼາຍ ສ່ວນສາວົກ ຂອງຕະຖາຄົດຜູ້ສາດສະດານັ້ນ ເມື່ອເພີ່ມພູນຄວາມສະຫງັດຕາມຕະຖາຄົດຜູ້ສາດສະດາພຣະອົງ ນັ້ນ ຍ່ອມພັກຢູ່ໃນເສນາສະນະອັນງຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູ ເງື້ອມຜາ ຖ້ຳ ປ່າຊ້າ ປ່າ ຮົກ ກາງແຈ້ງແລະກອງເຟືອງ ເມື່ອສາວົກນັ້ນຫຼີກອອກຢູ່ແນວນັ້ນ ພາມແລະຄະຫະບໍດີ ຊາວນິ ຄົມແລະຊາວຊົນນະບົດ ຍ່ອມພາກັນເຂົ້າໄປຫາ ເມື່ອພາມແລະຄະຫະບໍດີ ຊາວນິຄົມແລະຊາວ

ຊົນນະບົດ ພາກັນເຂົ້າໄປຫາແລ້ວ ສາວົກນັ້ນຍ່ອມຍິນດີຄວາມໝົກມຸ້ນ ເຖິງຄວາມຍາກໄດ້ ຈະກັບວຽນມາເພື່ອຄວາມເປັນຜູ້ມັກຫຼາຍ ສາວົກນີ້ເຮົາຮຽກວ່າຜູ້ປະພຶດພົມມະຈັນມີອຸປັດທະວະດ້ວຍອຸປະທະວະຂອງຜູ້ປະພຶດພົມມະຈັນ ບາບອະກຸສົນທຳອັນເສົ້າໝອງ ເປັນເຫດເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີທຸກເປັນວິບາກ ເປັນທີ່ຕັ້ງແຫ່ງຊາດຊະຣາ ແລະ ມໍລະນະຕໍ່ໄປກໍໄດ້ຂ້າສາວົກນັ້ນ

ອານົນ ອຸປັດທະວະຂອງຜູ້ປະພຶດພົມມະຈັນ ເປັນແນວນີ້

ອານົນ ບັນດາອຸປັດທະວະທັງ ໓ ປະການນັ້ນ ອຸປັດທະວະຂອງຜູ້ປະພຶດພົມມະຈັນນີ້ ມີວິບາກເປັນທຸກ ມີວິບາກເຜັດຮ້ອນກວ່າອຸປັດທະວະຂອງອາຈານ ແລະ ອຸປັດທະວະຂອງສິດເປັນໄປເພື່ອຄວາມຕົກຕ່ຳ

[໑໘໖] ອານົນ ຍ້ອນເຫດນັ້ນ ທ່ານທັງຫຼາຍຈົ່ງປະພຶດຕໍ່ເຮົາດ້ວຍຂໍ້ວັດປະຕິບັດຂອງມິດເທີ້ນ ຢ່າປະພຶດຕໍ່ເຮົາດ້ວຍຂໍ້ວັດປະຕິບັດຂອງສັດຕູເລີຍ ຂໍ້ນັ້ນຈັກເປັນໄປເພື່ອປະໂຫຍດເກື້ອກູນ ແລະ ເພື່ອຄວາມສຸກແກ່ທ່ານທັງຫຼາຍ ຕະຫຼອດການລະນານ

ສາວົກທັງຫຼາຍ ຍ່ອມປະພຶດຕໍ່ສາດສະດາດ້ວຍຂໍ້ວັດປະຕິບັດຂອງສັດຕູ ບໍ່ປະພຶດດ້ວຍຂໍ້ວັດປະຕິບັດຂອງມິດ ເປັນແນວໃດ?

ຄື ສາດສະດາໃນທຳວິໄນນີ້ເປັນຜູ້ອະນຸເຄາະ ສະແຫວງຫາປະໂຫຍດ ອາໄສຄວາມອີດູຈຶ່ງສະແດງທຳສອນສາວົກທັງຫຼາຍວ່າ "ເລື້ອງນີ້ ເປັນໄປເພື່ອປະໂຫຍດເກື້ອກູນແລະເພື່ອຄວາມສຸກແກ່ທ່ານທັງຫຼາຍ" ສາວົກຂອງສາດສະດານັ້ນກັບບໍ່ຕັ້ງໃຈຟັງ ບໍ່ຕັ້ງໃຈເພື່ອຈະຮູ້ ແລະ ຍັງຫຼີກໜີທີ່ຈະປະພຶດຕາມຄຳສັ່ງສອນ

ສາວົກທັງຫຼາຍ ຍ່ອມປະພຶດຕໍ່ສາດສະດາດ້ວຍຂໍ້ວັດປະຕິບັດຂອງສັດຕູ ບໍ່ປະພຶດດ້ວຍຂໍ້ວັດປະຕິບັດຂອງມິດ ເປັນແນວນີ້

ສາວົກທັງຫຼາຍຍ່ອມປະພຶດຕໍ່ສາດສະດາດ້ວຍຂໍ້ວັດປະຕິບັດຂອງມິດ ບໍ່ປະພຶດດ້ວຍຂໍ້ວັດປະຕິບັດຂອງສັດຕູ ເປັນແນວໃດ?

ຄື ສາດສະດາໃນທຳວິໄນນີ້ເປັນຜູ້ອະນຸເຄາະ ສະແຫວງຫາປະໂຫຍດ ອາໄສຄວາມອີດູຈຶ່ງສະແດງທຳສອນສາວົກວ່າ "ເລື້ອງນີ້ເປັນໄປເພື່ອປະໂຫຍດເກື້ອກູນ ແລະເພື່ອຄວາມສຸກແກ່ທ່ານທັງຫຼາຍ" ສາວົກຂອງສາດສະດານັ້ນກໍຕັ້ງໃຈຟັງ ຕັ້ງໃຈເພື່ອຈະຮູ້ ແລະ ບໍ່ຫຼີກໜີທີ່ຈະປະພຶດຕາມຄຳສັ່ງສອນ

ສາວົກທັງຫຼາຍ ຍ່ອມປະພຶດຕໍ່ສາດສະດາດ້ວຍຂໍ້ວັດປະຕິບັດຂອງມິດ ບໍ່ປະພຶດດ້ວຍຂໍ້ວັດປະຕິບັດຂອງສັດຕູ ເປັນແນວນີ້

ອານົນ ຍ້ອນເຫດນັ້ນ ທ່ານທັງຫຼາຍຈົ່ງຮຽກຮ້ອງເຮົາເພື່ອເປັນມິດເທີ້ນ ຢ່າຮຽກຮ້ອງເຮົາເພື່ອເປັນສັດຕູເລີຍ ຂໍ້ນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນ ແລະ ເພື່ອຄວາມສຸກແກ່ທ່ານທັງຫຼາຍ ຕະຫຼອດການລະນານ

ອານົນ ເຮົາຈັກບໍ່ປະຄັບປະຄອງທ່ານທັງຫຼາຍ ເໝືອນຊ່າງໝໍ້ປະຄັບປະຄອງພາຊະນະດິນດິບທີ່ຍັງດິບຢູ່ ເຮົາຈັກກ່າວຂົ່ມແລ້ວຂົ່ມອີກ ຈັກກ່າວຍ້ອງຍໍແລ້ວຍ້ອງຍໍອີກ ບຸກຄົນໃດມີທຳເປັນແກ່ນສານ ບຸກຄົນນັ້ນຈັກດຳລົງຢູ່ໄດ້”

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະອານົນມີໃຈຍິນດີ ຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ມະຫາສູນຍະຕະສູດທີ ໘ ຈົບ**

# ໙. ອັດສະຣິຍັບພູຕະທຳມະສູດ

## ວ່າດ້ວຍອັດສະຣິຍັບພູຕະທຳຂອງພຣະພຸດທະອົງ

[໑໙໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ພິກຂຸຈຳນວນຫຼາຍກັບຈາກບິນທະບາດພາຍຫຼັງສັນພັດຕາຫານສຳເລັດແລ້ວ ນັ່ງປະຊຸມກັນໃນຫໍສັນ ໄດ້ເກີດການສົນທະນາກັນຂຶ້ນໃນລະຫວ່າງການປະຊຸມ ວ່າ

“ທ່ານຜູ້ມີອາຍຸທັງຫຼາຍ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຣະຕະຖາຄົດຊົງມີລິດຫຼາຍ ມີອານຸພາບຫຼາຍ ຊົງຣະນຶກເຖິງພຣະພຸດທະເຈົ້າໃນອະດີດ ຜູ້ປະຣິນິບພານແລ້ວ ຜູ້ຕັດປະປັນຈະທຳໄດ້ແລ້ວ ຊົງຕັດຕໍແຫ່ງວັດຕະ ຄອບງຳວັດຕະ ລ່ວງທຸກທັງປວງໄດ້ແລ້ວ ຊົງຮູ້ວ່າ “ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ມີພຣະຊາດແນວນີ້ຍ້ອນເຫດນີ້ແດ່ ມີພຣະນາມແນວນີ້ຍ້ອນເຫດນີ້ແດ່ ຊົງມີໂຄດຕະກູນແນວນີ້ຍ້ອນເຫດນີ້ແດ່ ຊົງມີສີນແນວນີ້ຍ້ອນເຫດນີ້ແດ່ ຊົງມີທຳແນວນີ້ຍ້ອນ

ເຫດນີ້ແດ່ ຊົງມີປັນຍາແນວນີ້ຍ້ອນເຫດນີ້ແດ່ ຊົງມີວິຫານທຳແນວນີ້ຍ້ອນເຫດນີ້ແດ່ ຊົງມີວິມຸດຕິແນວນີ້ກໍຍ້ອນເຫດນີ້ແດ່"

ເມື່ອພິກຂຸເຫຼົ່ານັ້ນ ສົນທະນາກັນແນວນີ້ແລ້ວ ທ່ານພຣະອານົນໄດ້ກ່າວກັບພິກຂຸເຫຼົ່ານັ້ນວ່າ "ທ່ານຜູ້ມີອາຍຸທັງຫຼາຍ ພຣະຕາດຄະຕະທັງຫຼາຍ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ແລະປະກອບດ້ວຍທຳອັນໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ"

ເລື້ອງນີ້ແລ ທີ່ພິກຂຸເຫຼົ່ານັ້ນສົນທະນາກັນຄ້າງໄວ້

[໑໗໘] ເມື່ອເວລາແລງ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກທີ່ຫຼີບຫຼີກ ສະເດັດໄປທີ່ຫໍສັນ ປະທັບນັ່ງເທິງພຣະພຸດທະອາດທີ່ປູລາດໄວ້ ແລ້ວໄດ້ຮັບສັ່ງຮຽກພິກຂຸເຫຼົ່ານັ້ນ ມາຕັດຖາມວ່າ "ພິກຂຸທັງຫຼາຍ ເວລານີ້ທ່ານທັງຫຼາຍນັ່ງສົນທະນາກັນດ້ວຍເລື້ອງອັນໃດ ເວົ້າເລື້ອງອັນໃດຄ້າງໄວ້"

ພິກຂຸເຫຼົ່ານັ້ນ ທູນຕອບວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂ້າພຣະອົງທັງຫຼາຍ ເມື່ອກັບຈາກບິນທະບາດ ພາຍຫຼັງສັນພັດຕາຫານສຳເລັດແລ້ວ ນັ່ງປະຊຸມກັນໃນຫໍສັນ ສົນທະນາກັນໃນລະຫວ່າງການປະຊຸມວ່າ "ທ່ານຜູ້ມີອາຍຸທັງຫຼາຍ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຣະຕະຖາຄົດຊົງມີລິດຫຼາຍ ມີອານຸພາບຫຼາຍ ຊົງຣະນຶກເຖິງພຣະພຸດທະເຈົ້າໃນອະດີດຜູ້ປະຣິນິບພານແລ້ວ ຜູ້ຕັດປະປັນຈະທຳໄດ້ແລ້ວ ຊົງຕັດຕໍແຫ່ງວັດຕະ ຄອບງຳວັດຕະ ລ່ວງທຸກທັງປວງໄດ້ແລ້ວ ຈັກຊົງຮູ້ວ່າ "ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ມີພຣະຊາດແນວນີ້ຍ້ອນເຫດນີ້ແດ່ ມີພຣະນາມແນວນີ້ ໆລໆ ມີໂຄດຕະກູນແນວນີ້ ໆລໆ ຊົງມີສີນແນວນີ້ ໆລໆ ຊົງມີທຳແນວນີ້ ໆລໆ ຊົງມີປັນຍາແນວນີ້ ໆລໆ ຊົງມີວິຫານທຳແນວນີ້ ໆລໆ ຊົງມີວິມຸດຕິແນວນີ້ຍ້ອນເຫດນີ້ແດ່"

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອຂ້າພຣະອົງທັງຫຼາຍ ສົນທະນາກັນແນວນີ້ແລ້ວ ທ່ານພຣະອານົນໄດ້ກ່າວກັບຂ້າພຣະອົງທັງຫຼາຍວ່າ "ທ່ານຜູ້ມີອາຍຸທັງຫຼາຍ ພຣະຕະຖາຄົດທັງຫຼາຍໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ແລະ ປະກອບດ້ວຍທຳອັນໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ" ເລື້ອງນີ້ແລ ທີ່ຂ້າພຣະອົງທັງຫຼາຍສົນທະນາກັນຄ້າງໄວ້ ກໍພໍດີພຣະຜູ້ມີພຣະພາກເຈົ້າສະເດັດມາເຖິງ ຂ້ານ້ອຍ"

## ທຳອັນໜ້າອັດສະຈັນ ໒໐ ປະການ

[໑໗໙] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກທ່ານພຣະອານົນມາດ້ວຍຕັດວ່າ "ອານົນ ຍ້ອນເຫດນັ້ນ ທ່ານຈົ່ງອະທິບາຍທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດ ຂອງຕະຖາຄົດໃຫ້ແຈ້ງຊັດຍິ່ງຂຶ້ນໄປເທີ້ນ"

ທ່ານພຣະອານົນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ

໑. ຂ້າພຣະອົງ ໄດ້ສະດັບຮັບມາ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນ ພຣະໂພທິສັດມີສະຕິສຳປະຊັນຍະ ໄປເກີດໃນສະຫວັນຊັ້ນດຸສິດ"

ແມ່ນຂໍ້ທີ່ພຣະໂພທິສັດມີສະຕິສຳປະຊັນຍະ ໄປເກີດໃນສະຫວັນຊັ້ນດຸສິດນີ້ ຂ້າພຣະອົງ ກໍຈື່ໄດ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດຂອງພຣະຜູ້ມີພຣະພາກເຈົ້າ

໒. ຂ້າພຣະອົງໄດ້ສະດັບຮັບມາ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນ ພຣະໂພທິສັດມີສະຕິສຳປະຊັນຍະ ຈຶ່ງສະຖິດຢູ່ໃນສະຫວັນຊັ້ນດຸສິດ"

ແມ່ນຂໍ້ທີ່ພຣະໂພທິສັດມີສະຕິສຳປະຊັນຍະສະຖິດຢູ່ໃນສະຫວັນຊັ້ນດຸສິດນີ້ ຂ້າພຣະອົງກໍ ຈື່ໄດ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດຂອງພຣະຜູ້ມີພຣະພາກເຈົ້າ

[໒໐໐] ໓. ຂ້າພຣະອົງໄດ້ສະດັບຮັບມາ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນ ພຣະໂພທິສັດສະຖິດຢູ່ໃນສະຫວັນຊັ້ນດຸສິດຈົນຕະຫຼອດອາຍຸ"

ແມ່ນຂໍ້ທີ່ພຣະໂພທິສັດສະຖິດຢູ່ໃນສະຫວັນຊັ້ນດຸສິດຕະຫຼອດອາຍຸນີ້ ຂ້າພຣະອົງກໍຈື່ໄດ້ ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດຂອງພຣະຜູ້ມີພຣະພາກເຈົ້າ

໔. ຂ້າພຣະອົງໄດ້ສະດັບຮັບມາ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນ ພຣະໂພທິສັດມີສະຕິສຳປະຊັນຍະຕະຫຼອດ ຕັ້ງແຕ່ຈຸຕິຈາກສະຫວັນຊັ້ນດຸສິດຈົນເຖິງລົງສູ່ພຣະ ອຸທອນຂອງພຣະມານດາ"

ແມ່ນຂໍ້ທີ່ພຣະໂພທິສັດມີສະຕິສຳປະຊັນຍະ ຕະຫຼອດຕັ້ງແຕ່ຈຸຕິຈາກສະຫວັນຊັ້ນດຸສິດຈົນ ເຖິງລົງສູ່ພຣະອຸທອນຂອງພຣະມານດານີ້ ຂ້າພຣະອົງກໍຈື່ໄດ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍ ຜາກົດຂອງພຣະຜູ້ມີພຣະພາກເຈົ້າ

[໒໐໑] ໕. ຂ້າພຣະອົງໄດ້ສະດັບຮັບມາ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນ ເວລາທີ່ພຣະໂພທິສັດຈຸຕິຈາກສະຫວັນຊັ້ນດຸສິດແລ້ວ ລົງສູ່ພຣະອຸທອນຂອງພຣະມານ ດາ ແສງສະຫວ່າງສະໄຫວຫາປະມານບໍ່ໄດ້ ຜາກົດຂຶ້ນໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ເກີນກວ່າເທວານຸພາບຂອງ ເທວະດາທັງຫຼາຍ ແມ່ນໃນຊ່ອງວ່າງລະຫວ່າງໂລກເຊິ່ງບໍ່ມີອັນໃດຄັ່ນ ມີສະພາບມືດມິດ ຫຼື ທີ່ທີ່ ດວງຈັນ ແລະ ດວງອາທິດເຊິ່ງມີລິດຫຼາຍ ມີອານຸພາບຫຼາຍ ສ່ອງແສງໄປບໍ່ເຖິງ ກໍມີແສງ ສະຫວ່າງສະໄຫວຫາປະມານບໍ່ໄດ້ຜາກົດຂຶ້ນ ເກີນກວ່າເທວານຸພາບຂອງເທວະດາທັງຫຼາຍ

ຍ້ອນແສງສະຫວ່າງນັ້ນ ສັດທັງຫຼາຍທີ່ເກີດໃນບ່ອນນັ້ນ ໆ ຈຶ່ງຮູ້ຈັກກັນແລະກັນວ່າ "ຍັງມີສັດອື່ນເກີດໃນບ່ອນນີ້ຄືກັນ" ແລະສະຫັດສີໂລກກະທາດນີ້ ສັ່ນສະເທືອນ ເລື່ອນລັ່ນ ທັງແສງສະຫວ່າງສະໄຫວຫາປະມານບໍ່ໄດ້ ກໍຜາກົດຂຶ້ນໃນໂລກ ເກີນກວ່າເທວານຸພາບຂອງເທວະດາທັງຫຼາຍ

ແມ່ນຂໍ້ທີ່ ໗ລ໗ ນີ້ ຂ້າພຣະອົງ ກໍຈື່ໄດ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດຂອງພຣະຜູ້ມີພຣະພາກເຈົ້າ

[໔໐໔] ຜ. ຂ້າພຣະອົງໄດ້ສະດັບຮັບມາສະເພາະພຣະພັກ ພຣະຜູ້ມີພຣະພາກເຈົ້າວ່າ "ອານົນ ເວລາທີ່ພຣະໂພທິສັດລົງສູ່ພຣະອຸທອນຂອງພຣະມານດາ ເທບພະບຸດ ໔ ອົງ ເຂົ້າໄປອາຮັກຂາພຣະໂພທິສັດນັ້ນ ປະຈຳທັງ ໔ ທິດ ດ້ວຍຕັ້ງໃຈວ່າ "ມະນຸດ ຫຼື ອະມະນຸດໃດ ໆ ຢ່າໄດ້ບຽດບຽນພຣະໂພທິສັດ ຫຼື ພຣະມານດາຂອງພຣະໂພທິສັດເລີຍ"

ແມ່ນຂໍ້ທີ ໗ລ໗ ນີ້ຂ້າພຣະ ອົງກໍຈື່ໄດ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດຂອງພຣະຜູ້ມີພຣະພາກເຈົ້າ

[໔໐໖] ກ. ຂ້າພຣະອົງໄດ້ສະດັບຮັບມາ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນ ເວລາທີ່ພຣະໂພທິສັດລົງສູ່ພຣະອຸທອນຂອງພຣະມານດາ ພຣະມານດາມີປົກກະຕິຊົງສີນ ຄື ເວັ້ນຈາກປານາຕິບາດ (ການຂ້າສັດ) ເວັ້ນຈາກອະທິນນາທານ (ການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້) ເວັ້ນຈາກກາເມສຸມິດສາຈານ (ການປະພຶດຜິດໃນກາມ) ເວັ້ນຈາກມຸສາວາດ(ການເວົ້າຕົວະ) ເວັ້ນຈາກສຸຣາເມຣະຍະມັດຊະປະມາທັດຖານ (ການເສບຂອງມຶນເມົາ ຄືສຸຣາແລະເມໄຣ ອັນເປັນເຫດແຫ່ງຄວາມຜະໝາດ)"

ແມ່ນຂໍ້ທີ່ ໗ລ໗ ນີ້ ຂ້າພຣະອົງກໍຈື່ໄດ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດຂອງພຣະຜູ້ມີພຣະພາກເຈົ້າ

ຓ. ຂ້າພຣະອົງໄດ້ສະດັບຮັບມາ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນ ເວລາທີ່ພຣະໂພທິສັດລົງສູ່ພຣະອຸທອນຂອງພຣະມານດາ ພຣະມານດາຂອງພຣະອົງບໍ່ຊົງມີຄວາມຮູ້ສຶກທາງກາມາຣົມ ເປັນຜູ້ທີ່ບຸຣຸດຜູ້ມີຈິດກຳໜັດໃດ ໆ ບໍ່ສາມາດລ່ວງເກີນໄດ້"

ແມ່ນຂໍ້ທີ່ ໗ລ໗ ນີ້ ຂ້າພຣະອົງກໍຈື່ໄດ້ວ່າ ເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດຂອງພຣະຜູ້ມີພຣະພາກເຈົ້າ

ຌ. ຂ້າພຣະອົງໄດ້ສະດັບຮັບມາ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນ ເວລາທີ່ພຣະໂພທິສັດລົງສູ່ພຣະອຸທອນຂອງພຣະມານດາ ພຣະມານດາຂອງພຣະອົງຊົງໄດ້ການ

ມະຄຸນ ໕ ເອີບອີ່ມ ພ້ອມພຽງ ໄດ້ຮັບການປົນເປີຢູ່ດ້ວຍກາມມະຄຸນ ໕" ແມ່ນຂໍ້ທີ່ ໗ລ໗ ນີ້ ຂ້າພຣະອົງກໍຈື່ໄດ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດ ຂອງພຣະຜູ້ມີພຣະພາກເຈົ້າ

[໔໐໔] ໑໐. ຂ້າພຣະອົງໄດ້ສະດັບຮັບມາ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນ ເວລາທີ່ພຣະໂພທິສັດລົງສູ່ພຣະອຸທອນຂອງພຣະມານດາ ພຣະມານດາຂອງພຣະອົງບໍ່ຊົງມີຄວາມເຈັບປ່ວຍໃດ ໆ ຊົງມີຄວາມສຸກ ບໍ່ລຳບາກພຣະວໍຣະກາຍ ແນມເຫັນພຣະໂພທິສັດຢູ່ພາຍໃນພຣະອຸທອນ ມີອະໄວຍະວະສົມບູນ ມີອິນຊີບໍ່ບົກຜ່ອງ ປຽບຄື ແກ້ວໄພທູນອັນງົດງາມຕາມທຳມະຊາດ ມີແປດຫລ່ຽມ ທີ່ເຈຍຣະໄນດີແລ້ວ ສຸກໃສເປັນປະກາຍໄດ້ສັດສ່ວນ ມີດ້າຍສີຂຽວ ສີເຫລືອງ ສີແດງ ສີຂາວ ຫຼື ສີນວນຮ້ອຍຢູ່ຂ້າງໃນ ຄົນຕາເຖິງຈັບແກ້ວໄພທູນນັ້ນວາງໄວ້ໃນມືແລ້ວພິຈາລະນາຮູ້ວ່າ "ນີ້ຄື ແກ້ວໄພທູນອັນງົດງາມຕາມທຳມະຊາດ ມີແປດຫລ່ຽມ ທີ່ເຈຍຣະໄນດີແລ້ວ ສຸກໃສເປັນປະກາຍໄດ້ສັດສ່ວນ ມີດ້າຍສີຂຽວ ສີເຫລືອງ ສີແດງ ສີຂາວ ຫຼືສີນວນຮ້ອຍຢູ່ຂ້າງໃນ" ແມ່ນສັນໃດ ເວລາທີ່ພຣະໂພທິສັດລົງສູ່ພຣະອຸທອນຂອງພຣະມານດາ ພຣະມານດາຂອງພຣະອົງບໍ່ຊົງມີຄວາມເຈັບປ່ວຍໃດ ໆ ຊົງມີຄວາມສຸກ ບໍ່ລຳບາກພຣະວໍຣະກາຍ ແນມເຫັນພຣະໂພທິສັດຢູ່ພາຍໃນພຣະອຸທອນມີອະໄວຍະວະສົມບູນ ມີອິນຊີບໍ່ບົກຜ່ອງ ຄືກັນສັນນັ້ນ"

ແມ່ນຂໍ້ທີ່ ໗ລ໗ ນີ້ ຂ້າພຣະອົງກໍຈື່ໄດ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດຂອງພຣະຜູ້ມີພຣະພາກເຈົ້າ

[໔໐໕] ໑໑. ຂ້າພຣະອົງໄດ້ສະດັບຮັບມາ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນ ເມື່ອພຣະໂພທິສັດປະສູດໄດ້ ໗ ມື້ ພຣະມານດາຂອງພຣະອົງສະຫວັນຄົດ ໄປເກີດໃນສະຫວັນຊັ້ນດຸສິດ"

ແມ່ນຂໍ້ທີ່ ໗ລ໗ ນີ້ ຂ້າພຣະອົງກໍຈື່ໄດ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດຂອງພຣະຜູ້ມີພຣະພາກເຈົ້າ

໑໘. ຂ້າພຣະອົງໄດ້ສະດັບຮັບມາ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນ ພຣະມານດາຂອງພຣະໂພທິສັດບໍ່ປະສູດພຣະໂອຣົດເໝືອນສະຕີທົ່ວໄປ ເຊິ່ງຈະຄອດລູກຫຼັງຈາກຕັ້ງທ້ອງໄດ້ ໙ ເດືອນ ຫຼື ໑໐ ເດືອນ ສ່ວນພຣະມານດາຂອງພຣະໂພທິສັດປະສູດພຣະໂອຣົດເມື່ອຊົງພຣະອຸທອນຄົບ ໑໐ ເດືອນທີ່ນັ້ນ"

ແມ່ນຂໍ້ທີ່ ໗ລ໗ ນີ້ ຂ້າພຣະອົງກໍຈື່ໄດ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດຂອງພຣະຜູ້ມີພຣະພາກເຈົ້າ

໑໓. ຂ້າພຣະອົງໄດ້ສະດັບຮັບມາ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນ

ພຣະມານດາຂອງພຣະໂພທິສັດບໍ່ປະສູດພຣະໂອຣົດເໝືອນສະຕີທົ່ວໄປ ເຊິ່ງຈະນັ່ງຄອດຫຼືນອນຄອດກໍໄດ້ ສ່ວນພຣະມານດາຂອງພຣະໂພທິສັດປະທັບຢືນປະສູດທີ່ນັ້ນ"

ແມ່ນຂໍ້ທີ່ ໗ລ໗ ນີ້ ຂ້າພຣະອົງກໍຈື່ໄດ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດ ຂອງພຣະຜູ້ມີພຣະພາກເຈົ້າ

໑໔. ຂ້າພຣະອົງໄດ້ສະດັບຮັບມາ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນເວລາທີ່ພຣະໂພທິສັດປະສູດຈາກພຣະອຸທອນຂອງພຣະມານດາ ໃນຕອນທຳອິດເທບທັງຫລາຍຈະເຮັດພິທີຕ້ອນຮັບ ຫລັງຈາກນັ້ນເປັນໜ້າທີ່ຂອງມະນຸດ"

ແມ່ນຂໍ້ທີ່ ໗ລ໗ ນີ້ ຂ້າພຣະອົງກໍຈື່ໄດ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດຂອງພຣະຜູ້ມີພຣະພາກເຈົ້າ

[໔໐໖] ໑໕. ຂ້າພຣະອົງໄດ້ສະດັບຮັບມາ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນ ເວລາທີ່ພຣະໂພທິສັດປະສູດຈາກພຣະອຸທອນຂອງພຣະມານດາຍັງບໍ່ທັນສຳຜັດແຜ່ນດິນເທບພະບຸດ ໔ ອົງ ຊ່ອຍກັນປະຄອງພຣະໂພທິສັດໄປໄວ້ເບື້ອງພຣະພັກຂອງພຣະມານດາແລ້ວຂາບທູນວ່າ "ໂຜດພໍພຣະທະໄທເທີ້ນພຣະເທວີ ພຣະຣາຊະໂອຣົດຂອງພຣະອົງທີ່ສະເດັດອຸບັດຂຶ້ນເປັນຜູ້ມີສັກໃຫຍ່"

ແມ່ນຂໍ້ທີ່ ໗ລ໗ ນີ້ ຂ້າພຣະອົງກໍຈື່ໄດ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດຂອງພຣະຜູ້ມີພຣະພາກເຈົ້າ

໑໖. ຂ້າພຣະອົງໄດ້ສະດັບຮັບມາ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນເວລາທີ່ພຣະໂພທິສັດປະສູດຈາກພຣະອຸທອນຂອງພຣະມານດາ ສະເດັດອອກຢ່າງບໍຣິສຸດແທ້ ບໍ່ເປິເປື້ອນດ້ວຍນ້ຳເມືອກ ເລືອດ ຫຼື ສິ່ງບໍ່ສະອາດໃດ ໆ ຈຶ່ງເປັນຜູ້ບໍລິສຸດມົດຈົດ ປຽບຄືແກ້ວມະນີທີ່ບຸກຄົນວາງໄວ້ໃນຜ້າກາສິກະພັດ ຍ່ອມບໍ່ເຮັດໃຫ້ຜ້າກາສິກະພັດເປິເປື້ອນ ເຖິງຜ້າກາສິກະພັດກໍບໍ່ເຮັດໃຫ້ແກ້ວມະນີເປິເປື້ອນ ຂໍ້ນັ້ນ ຍ້ອນເຫດໃດ? ຍ້ອນສິ່ງທັງສອງເປັນຂອງບໍລິສຸດແມ່ນສັນໃດ ເວລາທີ່ພຣະໂພທິສັດປະສູດຈາກພຣະອຸທອນຂອງພຣະມານດາ ຍ່ອມປະສູດຢ່າງບໍຣິສຸດແທ້ ບໍ່ເປິເປື້ອນດ້ວຍນ້ຳເມືອກ ເລືອດ ຫຼື ສິ່ງບໍ່ສະອາດໃດ ໆ ເປັນຜູ້ບໍລິສຸດມົດຈົດ ຄືກັນສັນນັ້ນ"

ແມ່ນຂໍ້ທີ່ ໗ລ໗ ນີ້ ຂ້າພຣະອົງກໍຈື່ໄດ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດ ຂອງພຣະຜູ້ມີພຣະພາກເຈົ້າ

໑໗. ຂ້າພຣະອົງໄດ້ສະດັບຮັບມາ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນ

ເວລາທີ່ພຣະໂພທິສັດປະສູດຈາກພຣະອຸທອນຂອງພຣະມານດາ ມີສາຍນ້ຳຜາກົດໃນອາກາດ ໔ ສາຍ ຄື ສາຍນ້ຳເຢັນ ແລະ ສາຍນ້ຳອຸ່ນ ເພື່ອຊຳຣະລ້າງພຣະໂພທິສັດແລະພຣະມານດາ" ແມ່ນຂໍ້ທີ່ ໗ລ໗ ນີ້ ຂ້າພຣະອົງກໍຈື່ໄດ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດ ຂອງພຣະຜູ້ມີພຣະພາກເຈົ້າ

[໔໐໗] ໑໘. ຂ້າພຣະອົງໄດ້ສະດັບຮັບມາ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນ ເມື່ອພຣະໂພທິສັດປະສູດໄດ້ບຶດໜຶ່ງ ປະທັບຢືນແນວໝັ້ນຄົງດ້ວຍພຣະບາດທັງສອງທີ່ສະເໝີກັນເທິງພື້ນປະຖະພີ ຊົງອວ່າຍໜ້າໄປທາງທິດເໜືອ ສະເດັດດຳເນີນໄປ ໗ ກ້າວ ຂະນະທີ່ໝູ່ເທວະດາກັ້ນສະເວດຕະສັດຕາມສະເດັດ ທອດພຣະເນດໄປສູ່ທິດທັງປວງ ແລ້ວຊົງເປ່ງອາສະພິວາຈາ (ວາຈາຢ່າງອົງອາດ) ວ່າ "ເຮົາຄືຜູ້ເລີດຂອງໂລກ ເຮົາຄືຜູ້ຈະເລີນທີ່ສຸດຂອງໂລກ ເຮົາຄືຜູ້ປະເສີດທີ່ສຸດຂອງໂລກ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ພົບໃໝ່ບໍ່ມີອີກຕໍ່ໄປ"

ແມ່ນຂໍ້ນີ້ ໗ລ໗ ຂ້າພຣະອົງກໍຈື່ໄດ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດຂອງພຣະຜູ້ມີພຣະພາກເຈົ້າ

໑໙. ຂ້າພຣະອົງໄດ້ສະດັບຮັບມາ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນ ເວລາທີ່ພຣະໂພທິສັດປະສູດຈາກພຣະອຸທອນຂອງພຣະມານດາ ແສງສະຫວ່າງສະໄຫວຫາປະມານບໍ່ໄດ້ ຜາກົດຂຶ້ນໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ເກີນກວ່າເທວານຸພາບຂອງເທວະດາທັງຫລາຍ ແມ່ນໃນຊ່ອງວ່າງລະຫວ່າງໂລກເຊິ່ງບໍ່ມີອັນໃດຄັ່ນ ມີສະພາບມືດມິດ ຫຼື ທີ່ທີ່ແສງສະຫວ່າງຂອງດວງຈັນແລະດວງອາທິດເຊິ່ງມີລິດຫຼາຍ ມີອານຸພາບຫຼາຍ ສ່ອງແສງໄປບໍ່ເຖິງ ກໍມີແສງສະຫວ່າງສະໄຫວຫາປະມານບໍ່ໄດ້ ຜາກົດຂຶ້ນເກີນກວ່າເທວານຸພາບຂອງເທວະດາທັງຫລາຍ ຍ້ອນແສງສະຫວ່າງນັ້ນ ສັດທັງຫລາຍທີ່ເກີດໃນບ່ອນນັ້ນ ໆ ຈຶ່ງຮູ້ຈັກກັນແລະກັນວ່າ "ຍັງມີສັດອື່ນເກີດໃນບ່ອນນີ້ຄືກັນ" ແລະ ໝື່ນໂລກກະທາດນີ້ ສັ່ນສະເທືອນ ເລື່ອນລັ່ນ ທັງແສງສະຫວ່າງສະໄຫວຫາປະມານບໍ່ໄດ້ ກໍຜາກົດຂຶ້ນໃນໂລກ ເກີນກວ່າເທວານຸພາບຂອງເທວະດາທັງຫລາຍ"

ແມ່ນຂໍ້ທີ່ ໗ລ໗ ນີ້ ຂ້າພຣະອົງກໍຈື່ໄດ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດ ຂອງພຣະຜູ້ມີພຣະພາກເຈົ້າ"

[໔໐໘] ໒໐. ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ຍ້ອນເຫດນັ້ນແລ ທ່ານຈົ່ງຈືທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດ ຂອງຕະຖາຄົດນີ້ໄວ້ເທີ້ນ ໃນເລື້ອງນີ້ ເວທະນາຂອງຕະຖາຄົດຍ່ອມຜາກົດເກີດຂຶ້ນ ຜາກົດຕັ້ງຢູ່ ຜາກົດເຖິງຄວາມດັບໄປ ສັນຍາຂອງຕະຖາຄົດຍ່ອມຜາກົດເກີດຂຶ້ນ ໗ລ໗ ວິຕົກຂອງຕະຖາຄົດຍ່ອມຜາກົດເກີດຂຶ້ນ ຜາກົດຕັ້ງຢູ່ ຜາກົດເຖິງຄວາມດັບໄປ

ອານົນ ທ່ານຈົ່ງຈື່ທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດ ຂອງຕະຖາຄົດນີ້ໄວ້ເທີ້ນ"

ທ່ານພຣະອານົນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນຂໍ້ທີ່ເວທະນາຂອງພຣະຜູ້ມີພຣະພາກເຈົ້າຍ່ອມຜາກົດເກີດຂຶ້ນ ຜາກົດຕັ້ງຢູ່ ຜາກົດເຖິງຄວາມດັບໄປ ສັນຍາຂອງພຣະຜູ້ມີພຣະພາກເຈົ້າຍ່ອມຜາກົດເກີດຂຶ້ນ ຯລຯ ວິຕົກຂອງພຣະຜູ້ມີພຣະພາກເຈົ້າຍ່ອມຜາກົດເກີດຂຶ້ນ ຜາກົດຕັ້ງຢູ່ ຜາກົດເຖິງຄວາມດັບໄປນີ້ ຂ້າພຣະອົງກໍຈື່ໄດ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດ ຂອງພຣະຜູ້ມີພຣະພາກເຈົ້າ ຂ້ານ້ອຍ"

ທ່ານພຣະອານົນໄດ້ກ່າວຄຳນີ້ແລ້ວ ພຣະສາດສະດາຊົງພໍພຣະທະໄທ ພິກຂຸເຫຼົ່ານັ້ນມີໃຈຍິນດີຕ່າງຊົມຊື່ນພາສິດຂອງທ່ານພຣະອານົນ ດັ່ງນີ້ແລ

**ອັດສະຣິຍັບພູຕະທຳມະສູດທີ ໓ ຈົບ**

# ໔. ພັກກຸລັດເຖຣັດສະຣິຍັບພູຕະສູດ

## ວ່າດ້ວຍອັດສະຣິຍະທຳຂອງພຣະພັກກຸນເຖຣະ

[໔໐໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ທ່ານພຣະພັກກຸນພັກຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ຄັ້ງນັ້ນແລ ປະຣິພາຊົກຊື່ອະເຈລະກັດສະປະ ຜູ້ເປັນສະຫາຍເກົ່າຂອງທ່ານພຣະພັກກຸລະເມື່ອຄັ້ງຍັງເປັນຄະຫຼືຫັດ ເຂົ້າໄປຫາທ່ານພຣະພັກກຸລະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບທ່ານພຣະພັກກຸລະວ່າ "ທ່ານພັກກຸລະ ທ່ານບວດມາດົນທໍ່ໃດແລ້ວ"

ທ່ານພຣະພັກກຸລະຕອບວ່າ "ທ່ານຜູ້ມີອາຍຸ ເຮົາບວດມາ ໘໐ ພັນສາແລ້ວ"

"ຕະຫຼອດເວລາ ໘໐ ພັນສານັ້ນ ທ່ານເສບເມຖຸນທຳມາຈັກເທື່ອ ຂ້ານ້ອຍ"

"ກັດສະປະຜູ້ມີອາຍຸ ທ່ານບໍ່ຄວນຖາມເຮົາແນວນີ້ວ່າ "ຕະຫຼອດເວລາ ໘໐ ພັນສານັ້ນ ທ່ານເສບເມຖຸນທຳມາຈັກເທື່ອ ຂ້ານ້ອຍ" ແຕ່ທ່ານຄວນຖາມເຮົາແນວນີ້ວ່າ "ກໍຕະຫຼອດເວລາ ໘໐ ພັນສານີ້ ກາມສັນຍາເຄີຍເກີດຂຶ້ນກັບທ່ານຈັກເທື່ອ"

[໔໑໐] ທ່ານຜູ້ມີອາຍຸ ເມື່ອເຮົາບວດມາຕະຫຼອດເວລາ ໘໐ ພັນສາ ເຮົາບໍ່ຮູ້ສຶກເລີຍວ່າການສັນຍາເຄີຍເກີດຂຶ້ນ"

"ຂໍ້ທີ່ທ່ານພັກກຸລະບໍ່ຮູ້ສຶກເລີຍວ່າມີການສັນຍາເຄີຍເກີດຂຶ້ນຕະຫຼອດເວລາ ໘໐ ພັນສານີ້ ຂ້າພະເຈົ້າຈະຈືໄວ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດ ຂອງທ່ານພັກກຸລະ" (໑)

"ທ່ານຜູ້ມີອາຍຸ ເມື່ອເຮົາບວດມາຕະຫຼອດເວລາ ໘໐ ພັນສາ ເຮົາບໍ່ຮູ້ສຶກເລີຍວ່າພະຍາບາດສັນຍາ ຯລຯ ວິຫິງສາສັນຍາເຄີຍເກີດຂຶ້ນ"

"ຂໍ້ທີ່ທ່ານພັກກຸລະບໍ່ຮູ້ສຶກເລີຍວ່າພະຍາບາດສັນຍາ ຯລຯ ວິຫິງສາສັນຍາເຄີຍເກີດຂຶ້ນຕະຫຼອດເວລາ ໘໐ ພັນສານີ້ ຂ້າພະເຈົ້າຈະຈືໄວ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດຂອງທ່ານພັກກຸລະ" (໔-໓)

"ທ່ານຜູ້ມີອາຍຸ ເມື່ອເຮົາບວດມາຕະຫຼອດເວລາ ໘໐ ພັນສາ ເຮົາບໍ່ຮູ້ສຶກເລີຍວ່າການວິຕົກເຄີຍເກີດຂຶ້ນ"

"ຂໍ້ທີ່ທ່ານພັກກຸລະບໍ່ຮູ້ສຶກເລີຍວ່າ ການວິຕົກເຄີຍເກີດຂຶ້ນ ຕະຫຼອດເວລາ ໘໐ ພັນສານີ້ ຂ້າພະເຈົ້າຈະຈືໄວ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດຂອງທ່ານພັກກຸລະ" (໔)

"ທ່ານຜູ້ມີອາຍຸ ເມື່ອເຮົາບວດມາຕະຫຼອດເວລາ ໘໐ ພັນສາ ເຮົາບໍ່ຮູ້ສຶກເລີຍວ່າມີພະຍາບາດວິຕົກ ຯລຯ ວິຫິງສາວິຕົກເຄີຍເກີດຂຶ້ນ"

"ຂໍ້ທີ່ທ່ານພັກກຸລະບໍ່ຮູ້ສຶກເລີຍວ່າວິຫິງສາວິຕົກເຄີຍເກີດຂຶ້ນ ຕະຫຼອດເວລາ ໘໐ ພັນສານີ້ ຂ້າພະເຈົ້າຈະຈືໄວ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດຂອງທ່ານພັກກຸລະ" (໕-໖)

[໔໑໑] "ທ່ານຜູ້ມີອາຍຸ ເມື່ອເຮົາບວດມາຕະຫຼອດເວລາ ໘໐ ພັນສາ ເຮົາບໍ່ຮູ້ສຶກຍິນດີຄະຫະບໍດີຈີວອນເລີຍ"

"ຂໍ້ທີ່ທ່ານພັກກຸລະບໍ່ຮູ້ສຶກຍິນດີຄະຫະບໍດີຈີວອນເລີຍ ຕະຫຼອດເວລາ ໘໐ ພັນສານີ້ ຂ້າພະເຈົ້າຈະຈືໄວ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດຂອງທ່ານພັກກຸລະ" (໗)

"ທ່ານຜູ້ມີອາຍຸ ເມື່ອເຮົາບວດມາຕະຫຼອດເວລາ ໘໐ ພັນສາ ເຮົາບໍ່ຮູ້ຈັກການໃຊ້ມີດຕັດຜ້າເປັນຈີວອນເລີຍ ຯລຯ" (໘)

"ຯລຯ ເຮົາບໍ່ຮູ້ຈັກການໃຊ້ເຂັມຫຍິບຈີວອນເລີຍ
ຯລຯ ບໍ່ຮູ້ຈັກການໃຊ້ເຄື່ອງຍ້ອມຍ້ອມຈີວອນເລີຍ

ຯລຯ ບໍ່ຮູ້ຈັກການຫຍິບຈີວອນທີ່ໄມ້ສະດຶງເລີຍ

ຯລຯ ບໍ່ຮູ້ຈັກການຈັດເຮັດຈີວອນຂອງເພື່ອນພົມມະຈາຣີເລີຍ

ຯລຯ ບໍ່ຮູ້ສຶກຍິນດີກັບກິດນິມົນເລີຍ

ຯລຯ ບໍ່ຮູ້ສຶກເລີຍວ່າເຄີຍເກີດຄວາມຄິດແນວນີ້ວ່າ "ຂໍໃຜ ໆ ເພິ່ງນິມົນເຮົາເທີ້ນ"

ຯລຯ ບໍ່ຮູ້ຈັກການນັ່ງໃນບໍລິເວນເຮືອນເລີຍ

ຯລຯ ບໍ່ຮູ້ຈັກການສັນໃນບໍລິເວນເຮືອນເລີຍ

ຯລຯ ບໍ່ຮູ້ຈັກການຖືນິມິດແຫ່ງມາຕຸຄາມໂດຍອະນຸພະຍັນຊະນະ°ເລີຍ

ຯລຯ ບໍ່ຮູ້ຈັກການສະແດງທຳແກ່ມາຕຸຄາມໂດຍທີ່ສຸດແມ່ນຄາຖາສີ່ບາດເລີຍ

ຯລຯ ບໍ່ຮູ້ຈັກການເຂົ້າໄປສູ່ສຳນັກຂອງພິກຂຸນີເລີຍ

ຯລຯ ບໍ່ຮູ້ຈັກການສະແດງທຳແກ່ພິກຂຸນີເລີຍ

ຯລຯ ບໍ່ຮູ້ຈັກການສະແດງທຳແກ່ສິກຂະມານາເລີຍ

ຯລຯ ບໍ່ຮູ້ຈັກການສະແດງທຳແກ່ສາມະເນຣີເລີຍ

ຯລຯ ບໍ່ຮູ້ຈັກການໃຫ້ບັນພະຊາເລີຍ

ຯລຯ ບໍ່ຮູ້ຈັກການໃຫ້ອຸປະສົມບົດເລີຍ

ຯລຯ ບໍ່ຮູ້ຈັກການໃຫ້ນິໄສເລີຍ

ຯລຯ ບໍ່ຮູ້ຈັກການໃຊ້ສາມະເນນເປັນອຸປັດຖາກເລີຍ

ຯລຯ ບໍ່ຮູ້ຈັກການອາບນ້ຳໃນເຮືອນໄຟເລີຍ

ຯລຯ ບໍ່ຮູ້ຈັກການໃຊ້ຈຸນອາບນ້ຳເລີຍ

ຯລຯ ບໍ່ຮູ້ຈັກຍິນດີການບີບນວດໂຕຂອງເພື່ອນພົມມະຈາຣີເລີຍ

ຯລຯ ບໍ່ຮູ້ຈັກອາພາດອັນເຄີຍເກີດຂຶ້ນແລ້ວ ໂດຍທີ່ສຸດແມ່ນຊົ່ວຂະນະຣີດນົມງົວສຳເລັດ

ຯລຯ ບໍ່ຮູ້ຈັກສັນຢາໂດຍທີ່ສຸດແມ່ນທໍ່ຕ່ອນສົ້ມມໍເລີຍ

ຯລຯ ບໍ່ຮູ້ຈັກການນັ່ງອີງພະນັກອີງເລີຍ

ຯລຯ ບໍ່ຮູ້ຈັກການນອນເລີຍ"

"ຂໍ້ທີ່ທ່ານພັກກຸລະບໍ່ຮູ້ຈັກການນອນຕະຫຼອດເວລາ ໘໐ ພັນສານີ້ ຂ້າພະເຈົ້າຈະຈື່ໄວ້ວ່າ ເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດ ຂອງທ່ານພັກກຸລະ" (໙-໓໓)

"ທ່ານຜູ້ມີອາຍຸ ເມື່ອເຮົາບວດມາຕະຫຼອດເວລາ ໘໐ ພັນສາ ເຮົາບໍ່ຮູ້ຈັກການຈຳພັນສາ ໃນເສນາສະນະໃກ້ເຮືອນເລີຍ"

"ຂໍ້ທີ່ທ່ານພັກກຸລ ະບໍ່ຮູ້ຈັກການຈຳພັນສາໃນເສນາສະນະໃກ້ເຮືອນຕະຫຼອດເວລາ ໘໐ ພັນ ສານີ້ ຂ້າພະເຈົ້າຈະຈືໄວ້ວ່າ ເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດຂອງທ່ານພັກກຸລະ" (໓໔)

"ທ່ານຜູ້ມີອາຍຸ ເຮົາເປັນຜູ້ມີກິເລດ ສັນບິນທະບາດຂອງຊາວແວ່ນແຄວ້ນ ໗ ມື້ທໍ່ນັ້ນ ໃນວັນທີ ໘ ກໍໄດ້ບັນລຸອະຣະຫັດຕະຜົນ"

"ຂໍ້ທີ່ທ່ານພັກກຸລະເປັນຜູ້ມີກິເລດ ສັນບິນທະບາດຂອງຊາວແວ່ນແຄວ້ນ ໗ ມື້ທໍ່ນັ້ນ ໃນວັນທີ ໘ ກໍໄດ້ບັນລຸອະຣະຫັດຕະຜົນນີ້ ຂ້າພະເຈົ້າຈະຈື່ໄວ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດ ຂອງທ່ານພັກກຸລະ" (໓໕)

[໔໑໔] "ທ່ານພັກກຸລະ ຂໍໃຫ້ຂ້າພະເຈົ້າໄດ້ບັນພະຊາອຸປະສົມບົດໃນພຣະທຳວິໄນນີ້ເທີ້ນ"

ອະເຈລະກັດສະປະໄດ້ບັນພະຊາອຸປະສົມບົດໃນພຣະທຳວິໄນນີ້ແລ້ວ ເມື່ອບວດແລ້ວບໍ່ດົນ ຫຼີກໄປຢູ່ຜູ້ດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດ ກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດ ອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ຈຶ່ງເປັນອັນວ່າ ທ່ານພຣະກັດສະປະໄດ້ເປັນພຣະອະຣະຫັນອົງໜຶ່ງ ໃນບັນດາພຣະອະຣະຫັນ ທັງຫຼາຍ

ສະໄໝຕໍ່ມາ ທ່ານພຣະພັກກຸລະຖືລູກກະແຈເຂົ້າໄປສູ່ວິຫານທຸກ ໆ ຫຼັງ ແລ້ວກ່າວແນວນີ້ວ່າ "ນິມົນທ່ານຜູ້ມີອາຍຸອອກມາເທີ້ນ ນິມົນທ່ານຜູ້ມີອາຍຸອອກມາເທີ້ນ ມື້ນີ້ຈັກເປັນມື້ປະຣິນິບພານຂອງເຮົາ"

ທ່ານພຣະກັດສະປະກ່າວວ່າ "ຂໍ້ທີ່ທ່ານພັກກຸລະຖືລູກກະແຈເຂົ້າໄປສູ່ວິຫານທຸກ ໆ ຫຼັງ ແລ້ວກ່າວແນວນີ້ວ່າ "ນິມົນທ່ານຜູ້ມີອາຍຸອອກມາເທີ້ນ ນິມົນທ່ານຜູ້ມີອາຍຸອອກມາເທີ້ນ ມື້ນີ້ຈັກເປັນມື້ປະຣິນິບພານຂອງເຮົາ" ເຮົາທັງຫຼາຍ ຈະຈືໄວ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດຂອງທ່ານພັກກຸລະ"

ຄັ້ງນັ້ນ ທ່ານພຣະພັກກຸລະນັ່ງປະຣິນິບພານໃນທ່າມກາງພິກຂຸສົງ ທ່ານພຣະກັດສະປະກ່າວວ່າ "ຂໍ້ທີ່ທ່ານພັກກຸລະນັ່ງປະຣິນິບພານໃນທ່າມກາງພິກຂຸສົງນີ້ ເຮົາທັງຫຼາຍຈະຈືໄວ້ວ່າເປັນທຳອັນໜ້າອັດສະຈັນ ບໍ່ເຄີຍຜາກົດຂອງທ່ານພັກກຸລະ" ດັ່ງນີ້ແລ

**ພັກກຸລັດເຖຣັດສະຣິຍັບພູຕະສູດທີ ໔ ຈົບ**

# ๕. ທັນຕະພູມິສູດ

## ວ່າດ້ວຍພູມຂອງຜູ້ໄດ້ຮັບການເຝິກແລ້ວ

[໔໑໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ສະມະນຸດເທດຊື່ອະຈິຣະວະຕະ ຢູ່ໃນຕູບໃກ້ປ່າ ຄັ້ງນັ້ນ ພຣະຣາດຊະກຸມານນາມວ່າ ຊະຍະເສນ ຊົງດຳເນີນຫຼິ້ນໄປໂດຍລຳດັບ ເຂົ້າໄປຫາອະຈິຣະວະຕະ ສະມະນຸດເທດຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນ ແລ້ວປະທັບນັ່ງຢູ່ບ່ອນສົມຄວນ

ຊະຍະເສນຣາດຊະກຸມານ ໄດ້ຮັບສັ່ງກັບອະຈິຣະວະຕະ ສະມະນຸດເທດວ່າ "ທ່ານອັກຄິເວດສະນະ ຂ້າພະເຈົ້າໄດ້ຟັງມາແນວນີ້ວ່າ "ພິກຂຸໃນພຣະທຳວິໄນນີ້ ເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ເພິ່ງບັນລຸຈິດເຕກັກຄະຕາ (ສະພາວະທີ່ຈິດມີອາລົມດຽວ) ໄດ້" ແມ່ນບໍ?"

ອະຈິຣະວະຕະ ສະມະນຸດເທດຖວາຍພຣະພອນວ່າ "ພຣະຣາດຊະກຸມານ ຂໍ້ນີ້ເປັນແນວນັ້ນ ພິກຂຸໃນພຣະທຳວິໄນນີ້ ເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ເພິ່ງບັນລຸຈິດເຕກັກຄະຕາໄດ້"

"ດີແລ້ວ ຂໍທ່ານອັກຄິເວດສະນະໂຜດສະແດງທຳຕາມທີ່ໄດ້ສະດັບມາ ຕາມທີ່ໄດ້ສຶກສາມາແກ່ຂ້າພະເຈົ້າເທີ້ນ"

"ພຣະຣາດຊະກຸມານ ອາຕະມາພາບບໍ່ສາມາດສະແດງທຳແກ່ພຣະອົງຕາມທີ່ໄດ້ສະດັບມາ ຕາມທີ່ໄດ້ສຶກສາມາ ຍ້ອນຖ້າອາຕະມາພາບຈະສະແດງທຳແກ່ພຣະອົງຕາມທີ່ໄດ້ສະດັບມາ ຕາມທີ່ໄດ້ສຶກສາມາ ແຕ່ພຣະອົງບໍ່ຊົງຮູ້ອັດຖະແຫ່ງພາສິດຂອງອາຕະມາພາບ ຂໍ້ນັ້ນຈະເປັນຄວາມຍາກ ຈະເປັນຄວາມລຳບາກແກ່ອາຕະມາພາບ"

"ຂໍທ່ານອັກຄິເວດສະນະໂຜດສະແດງທຳແກ່ຂ້າພະເຈົ້າຕາມທີ່ໄດ້ສະດັບມາ ຕາມທີ່ໄດ້ສຶກສາມາ ບາງເທື່ອຂ້າພະເຈົ້າອາດຮູ້ອັດຖະແຫ່ງພາສິດຂອງທ່ານອັກຄິເວດສະນະກໍໄດ້"

"ພຣະຣາດຊະກຸມານ ອາຕະມາພາບຈະສະແດງທຳແກ່ພຣະອົງຕາມທີ່ໄດ້ສະດັບມາ

ຕາມທີ່ໄດ້ສຶກສາມາ ຖ້າພຣະອົງຊົງຮູ້ອັດຖະແຫ່ງພາສິດຂອງອາຕະມາພາບໄດ້ ນັ້ນແລເປັນຄວາມດີ ຖ້າບໍ່ຊົງຮູ້ ຂໍພຣະອົງເພິ່ງດຳລົງຢູ່ໃນພາວະຂອງພຣະອົງເທີ້ນ ຢ່າໄດ້ຊັກຖາມອາຕະມາພາບໃນທຳນັ້ນໃຫ້ຍິ່ງຂຶ້ນໄປເລີຍ"

"ຂໍທ່ານອັກຄິເວດສະນະ ໂຜດສະແດງທຳແກ່ຂ້າພະເຈົ້າຕາມທີ່ໄດ້ສະດັບມາ ຕາມທີ່ໄດ້ສຶກສາມາ ຖ້າຂ້າພະເຈົ້າຮູ້ອັດຖະແຫ່ງພາສິດຂອງທ່ານອັກຄິເວດສະນະໄດ້ ນັ້ນເປັນຄວາມດີ ຖ້າບໍ່ຮູ້ ຂ້າພະເຈົ້າຈະດຳລົງຕົນຢູ່ໃນພາວະຂອງຕົນ ຂ້າພະເຈົ້າຈັກບໍ່ຊັກຖາມທ່ານອັກຄິເວດສະນະໃນທຳນັ້ນໃຫ້ຍິ່ງຂຶ້ນໄປ"

[໔໑໔] ລຳດັບນັ້ນ ອະຈິຣະວະຕະ ສະມະນຸດເທດໄດ້ສະແດງທຳແກ່ຊະຍະເສນຣາດຊະກຸມານຕາມທີ່ໄດ້ສະດັບມາ ຕາມທີ່ໄດ້ສຶກສາມາ ເມື່ອອະຈິຣະວະຕະ ສະມະນຸດເທດກ່າວແນວນັ້ນແລ້ວ

ຊະຍະເສນຣາດຊະກຸມານໄດ້ຕັດວ່າ "ທ່ານອັຄຄິເວສນະຜູ້ຈະເລີນ ເປັນໄປບໍ່ໄດ້ທີ່ພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ເພິ່ງບັນລຸຈິດເຕກັກຄະຕາໄດ້"

ຕໍ່ຈາກນັ້ນ ຊະຍະເສນຣາດຊະກຸມານຊົງປະກາດຄວາມເປັນໄປບໍ່ໄດ້ແກ່ອະຈິຣະວະຕະສະມະນຸດເທດ ຊົງລຸກຂຶ້ນຈາກທີ່ປະທັບແລ້ວສະເດັດຈາກໄປ

ຄັ້ງນັ້ນ ເມື່ອຊະຍະເສນຣາດຊະກຸມານສະເດັດຈາກໄປແລ້ວບໍ່ດົນ ອະຈິຣະວະຕະ ສະມະນຸດເທດໄດ້ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວ ນັ່ງຢູ່ບ່ອນສົມຄວນ ໄດ້ຂາບທູນເລື້ອງທີ່ໄດ້ສົນທະນາປາໄສກັບຊະຍະເສນຣາດຊະກຸມານທັງໝົດນັ້ນແດ່ພຣະຜູ້ມີພຣະພາກເຈົ້າ

ເມື່ອອະຈິຣະວະຕະ ສະມະນຸດເທດຂາບທູນແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດແນວນີ້ວ່າ "ອັກຄິເວດສະນະ ຊະຍະເສນຣາດຊະກຸມານເພິ່ງໄດ້ປະໂຫຍດຈາກຂໍ້ຄວາມນັ້ນໃນພາສິດຂອງທ່ານນີ້ແຕ່ຢູ່ໄສ ເປັນໄປບໍ່ໄດ້ທີ່ຊະຍະເສນຣາດຊະກຸມານ ຜູ້ຍັງຢູ່ທ່າມກາງກາມ ຍັງບໍຣິໂພກກາມ ຖືກການວິຕົກຮຸມຊຸກຍູ້ ຖືກຄວາມຮ້ອນຮົນຍ້ອນການແຜດເຜົາ ຍັງຂົນຂວາຍໃນການສະແຫວງຫາກາມຢູ່ ຈັກຊົງຮູ້ ຊົງເຫັນ ຫຼືຊົງເຮັດໃຫ້ແຈ້ງຈິດເຕກັກຄະຕາທີ່ບຸກຄົນເພິ່ງຮູ້ ເພິ່ງເຫັນ ເພິ່ງບັນລຸ ເພິ່ງເຮັດໃຫ້ແຈ້ງ ດ້ວຍເນກຂຳມະ[໑]ໄດ້

[໔໑໕] ອັກຄິເວດສະນະ ຊ້າງທີ່ຄວນເຝິກຄູ່ໜຶ່ງ ມ້າທີ່ຄວນເຝິກຄູ່ໜຶ່ງ ຫຼືງົວທີ່ຄວນເຝິກຄູ່ໜຶ່ງ ທີ່ຜູ້ເຝິກເຝິກດີແລ້ວ ຫັດດີແລ້ວ (ກັບ) ຊ້າງທີ່ຄວນເຝິກອີກຄູ່ໜຶ່ງ ມ້າທີ່ຄວນເຝິກອີກຄູ່ໜຶ່ງ ຫຼືງົວທີ່ຄວນເຝິກອີກຄູ່ໜຶ່ງ ທີ່ເຂົາບໍ່ໄດ້ເຝິກ ບໍ່ໄດ້ຫັດເລີຍ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄືຊ້າງທີ່ຄວນເຝິກ ມ້າທີ່ຄວນເຝິກ ຫຼືງົວທີ່ຄວນເຝິກ ຄູ່ທີ່ຜູ້ເຝິກເຝິກດີແລ້ວ ຫັດດີແລ້ວ ນັ້ນແລ

ຈະຮຽນຮູ້ເຫດການທີ່ຜູ້ເຝິກເຝິກແລ້ວ ເພິ່ງສຳເລັດພູມທີ່ຜູ້ເຝິກເຝິກແລ້ວໄດ້ບໍ?"

"ໄດ້ ຂ້ານ້ອຍ"

"ສ່ວນຊ້າງທີ່ຄວນເຝິກ ມ້າທີ່ຄວນເຝິກ ຫຼືງົວທີ່ຄວນເຝິກ ຄູ່ທີ່ເຂົາບໍ່ໄດ້ເຝິກ ບໍ່ໄດ້ຫັດແລ້ວເຫຼົ່ານັ້ນນັ້ນແລ ຈະຮຽນຮູ້ເຫດການທີ່ຜູ້ເຝິກເຝິກແລ້ວ ຈະສຳເລັດພູມທີ່ຜູ້ເຝິກເຝິກແລ້ວເໝືອນຊ້າງທີ່ຄວນເຝິກ ມ້າທີ່ຄວນເຝິກ ຫຼື ງົວທີ່ຄວນເຝິກ ຄູ່ທີ່ຜູ້ເຝິກເຝິກດີແລ້ວ ຫັດດີແລ້ວເຫຼົ່ານັ້ນໄດ້ບໍ?"

"ບໍ່ໄດ້ ຂ້ານ້ອຍ"

"ອັກຄິເວດສະນະ ຄືກັນສັນນັ້ນ ເປັນໄປບໍ່ໄດ້ທີ່ຊະຍະເສນຣາດຊະກຸມານຜູ້ຍັງຢູ່ທ່າມກາງກາມ ຍັງບໍຣິໂພກກາມ ຖືກການວິຕົກຮຸມຊຸກຍູ້ ຖືກຄວາມຮ້ອນຮົນຍ້ອນການແຜດເຜົາ ຍັງຂົນຂວາຍໃນການສະແຫວງຫາການຢູ່ ຈັກຊິງຮູ້ ຊິງເຫັນ ຫຼື ຊິງເຮັດໃຫ້ແຈ້ງຈິດເຕກັກຄະຕາທີ່ບຸກຄົນເພິ່ງຮູ້ ເພິ່ງເຫັນ ເພິ່ງບັນລຸ ເພິ່ງເຮັດໃຫ້ແຈ້ງ ດ້ວຍເນກຂຳມະໄດ້

[໔໑໖] ອັກຄິເວດສະນະ ມີພູໃຫຍ່ຢູ່ບໍ່ໄກເຮືອນຫຼືນິຄົມ ສະຫາຍ ໔ ຄົນອອກຈາກເຮືອນຫຼືນິຄົມນັ້ນແລ້ວຈູງມືກັນເຂົ້າໄປສູ່ທີ່ທີ່ພູຕັ້ງຢູ່ ສະຫາຍຄົນໜຶ່ງຢືນຢູ່ທີ່ເຊີງພູເບື້ອງລ່າງ ສະຫາຍຄົນໜຶ່ງຂຶ້ນໄປເທິງພູ ສະຫາຍຄົນທີ່ຢືນຢູ່ທີ່ເຊີງພູເບື້ອງລ່າງຈຶ່ງກ່າວກັບສະຫາຍຜູ້ຢືນຢູ່ເທິງພູນັ້ນແນວນີ້ວ່າ "ເພື່ອນເອີຍ ທ່ານຢືນຢູ່ເທິງພູນັ້ນ ແນມເຫັນອັນໃດແດ່" ສະຫາຍຜູ້ຢືນຢູ່ເທິງພູນັ້ນຕອບແນວນີ້ວ່າ "ເພື່ອນເອີຍ ເຮົາຢືນຢູ່ເທິງພູແລ້ວ ຍ່ອມແນມເຫັນສວນອັນໜ້າອອນຊອນ ປ່າໄມ້ອັນໜ້າອອນຊອນ ພູມປະເທດອັນໜ້າອອນຊອນ ແລະ ສະໂບກຂະຣະນີອັນໜ້າອອນຊອນ"

ສະຫາຍຜູ້ຢືນຢູ່ທີ່ເຊີງພູເບື້ອງລ່າງນັ້ນກ່າວແນວນີ້ວ່າ "ເພື່ອນເອີຍ ເປັນໄປບໍ່ໄດ້ທີ່ທ່ານຢືນຢູ່ເທິງພູແລ້ວຈະເພິ່ງແນມເຫັນສວນອັນໜ້າອອນຊອນ ປ່າໄມ້ອັນໜ້າອອນຊອນ ພູມປະເທດອັນໜ້າອອນຊອນ ແລະສະໂບກຂະຣະນີອັນໜ້າອອນຊອນໄດ້" ສະຫາຍຜູ້ຢືນຢູ່ເທິງພູ ຈຶ່ງລົງມາຍັງເຊີງພູເບື້ອງລ່າງແລ້ວຈູງແຂນສະຫາຍຄົນນັ້ນໃຫ້ຂຶ້ນໄປເທິງພູລູກນັ້ນ ໃຫ້ພັກເໜື່ອຍບຶດໜຶ່ງແລ້ວ ເພິ່ງກ່າວແນວນີ້ວ່າ "ເພື່ອນເອີຍ ທ່ານຢືນຢູ່ເທິງພູນັ້ນ ແນມເຫັນອັນໃດແດ່" ສະຫາຍຄົນນັ້ນຕອບວ່າ "ເພື່ອນເອີຍ ເຮົາຢືນຢູ່ເທິງພູແລ້ວ ຍ່ອມແນມເຫັນສວນອັນໜ້າອອນຊອນ ປ່າໄມ້ອັນໜ້າອອນຊອນ ພູມປະເທດອັນໜ້າອອນຊອນ ແລະ ສະໂບກຂະຣະນີອັນໜ້າອອນຊອນ"

ສະຫາຍຜູ້ທີ່ຂຶ້ນໄປກ່ອນແລ້ວນັ້ນກ່າວແນວນີ້ວ່າ "ເພື່ອນເອີຍ ເຮົາຮູ້ຄຳທີ່ທ່ານກ່າວແລ້ວແນວນີ້ບັດນີ້ເອງວ່າ "ເພື່ອນເອີຍ ເປັນໄປບໍ່ໄດ້ທີ່ທ່ານຢືນຢູ່ເທິງພູແລ້ວ ຈະເພິ່ງແນມເຫັນສວນອັນໜ້າອອນຊອນ ປ່າໄມ້ອັນໜ້າອອນຊອນ ພູມປະເທດອັນໜ້າອອນຊອນ ແລະ ສະໂບກຂະ

ຣະນີອັນໜ້າອອນຊອນໄດ້" ແລະ ສະຫາຍຜູ້ຂຶ້ນໄປພາຍຫຼັງນັ້ນກ່າວວ່າ "ເຮົາຮູ້ຄຳທີ່ທ່ານກ່າວແນວນີ້ບັດນີ້ຄືກັນວ່າ "ເພື່ອນເອີຍ ເຮົາຢືນຢູ່ເທິງພູແລ້ວ ຍ່ອມແນມເຫັນສວນອັນໜ້າອອນຊອນ ປ່າໄມ້ອັນໜ້າອອນຊອນ ພູມປະເທດອັນໜ້າອອນຊອນ ແລະ ສະໂບກຂະຣະນີອັນໜ້າອອນຊອນໄດ້"

ສະຫາຍຜູ້ທີ່ຂຶ້ນໄປກ່ອນແລ້ວນັ້ນຈຶ່ງກ່າວແນວນີ້ວ່າ "ເພື່ອນເອີຍ ຄວາມເປັນຈິງ ເຮົາຖືກພູໃຫຍ່ໜ່ວຍນີ້ກັ້ນໄວ້ ຈຶ່ງແນມບໍ່ເຫັນສິ່ງທີ່ຄວນເຫັນ"

ອັກຄິເວດສະນະ ຄືກັນສັນນັ້ນ ເປັນໄປບໍ່ໄດ້ທີ່ຊະຍະເສນຣາດຊະກຸມານ ຜູ້ຖືກກອງອະວິດຊາໃຫຍ່ຍິ່ງກວ່າພູລູກນັ້ນກັ້ນໄວ້ ປິດບັງໄວ້ ຕຣຶງຮັດໄວ້ ຫໍ່ຫຸ້ມໄວ້ ຍັງຢູ່ທ່າມກາງກາມ ຍັງບໍຣິໂພກກາມ ຖືກກາມວິຕົກກຸ້ມຣຸມ ຖືກຄວາມຮ້ອນຮົນຍ້ອນກາມແຜດເຜົາ ຍັງຂົນຂວາຍໃນການສະແຫວງຫາກາມ ຈັກຊິງຮູ້ ຊິງເຫັນ ຫຼືຊິງເຮັດໃຫ້ແຈ້ງເຊິ່ງທຳທີ່ບຸກຄົນເພິ່ງຮູ້ ເພິ່ງເຫັນ ເພິ່ງບັນລຸ ເພິ່ງເຮັດໃຫ້ແຈ້ງດ້ວຍເນກຂຳມະໄດ້

ອັກຄິເວດສະນະ ຖ້າທ່ານເພິ່ງອະທິບາຍອຸປະມາ ໔ ຂໍ້ນີ້ ໃຫ້ແຈ້ງຊັດແກ່ຊະຍະເສນຣາດຊະກຸມານໄດ້ ຊະຍະເສນຣາດຊະກຸມານຈະເພິ່ງເຫຼື້ອມໃສທ່ານແນວໜ້າອັດສະຈັນ ແລະຊະຍະເສນຣາດຊະກຸມານຜູ້ເຫຼື້ອມໃສແລ້ວ ຈະເພິ່ງສະແດງອາການຂອງບຸກຄົນຜູ້ເຫຼື້ອມໃສແກ່ທ່ານ"

ອະຈິຣະວະຕະ ສະມະນຸດເທດຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຈັກອະທິບາຍອຸປະມາ ໔ ຂໍ້ນີ້ທີ່ໜ້າອັດສະຈັນ ທີ່ຂ້າພຣະອົງຍັງບໍ່ເຄີຍໄດ້ສະດັບມາກ່ອນໃຫ້ແຈ້ງຊັດແກ່ຊະຍະເສນຣາດຊະກຸມານ ເໝືອນພຣະຜູ້ມີພຣະພາກເຈົ້າໄດ້ແນວໃດນໍ?"

[໔໑໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອັກຄິເວດສະນະ ກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກ°ແລ້ວ ຮັບສັ່ງຮຽກພານຜູ້ຊ່ຽວຊານປ່າທີ່ຊ້າງອາໄສຢູ່ມາແລ້ວຕັດວ່າ "ມາເທີ້ນພໍ່ພານຊ້າງເພື່ອນຍາກ ທ່ານຈົ່ງຂີ່ຊ້າງຫຼວງເຂົ້າໄປສູ່ດົງຊ້າງ ເຫັນຊ້າງປ່າແລ້ວ ຈົ່ງຄ້ອງມັນມັດໄວ້ທີ່ຄໍຊ້າງຫຼວງເທີ້ນ" ພານປ່າຜູ້ເປັນຄວານຊ້າງ ຮັບພຣະຣາຊະໂອງການແລ້ວ ຈຶ່ງຂີ່ຊ້າງຫຼວງເຂົ້າໄປສູ່ດົງຊ້າງ ເຫັນຊ້າງປ່າແລ້ວ ຈຶ່ງຄ້ອງມັນມັດໄວ້ທີ່ຄໍຊ້າງຫຼວງ ຊ້າງຫຼວງຈຶ່ງນຳຊ້າງປ່ານັ້ນອອກມາສູ່ທີ່ກາງແຈ້ງໄດ້ ດ້ວຍເຫດພຽງທໍ່ນີ້ ຊ້າງປ່າຈຶ່ງມາຢູ່ກາງແຈ້ງ ຄວາມຈິງຊ້າງປ່າທັງຫຼາຍຍັງຫ່ວງຖິ່ນຄືດົງຊ້າງຢູ່ ພານປ່າຜູ້ເປັນຄວານຊ້າງຈຶ່ງຂາບທູນເລື້ອງນີ້ແດ່ກະສັດຕາທິຣາດວ່າ "ຂໍເດຊະ ຊ້າງປ່າຂອງພຣະອົງມາຢູ່ທີ່ກາງແຈ້ງແລ້ວ ໂດຍຂ້ານ້ອຍ"

ລຳດັບນັ້ນ ກະສັດຕາທິຣາດຈຶ່ງຮັບສັ່ງຮຽກຄວານຊ້າງມາດ້ວຍຕັດວ່າ "ມາເທີ້ນພໍ່ຄວານຊ້າງ ທ່ານຈົ່ງເຝິກຊ້າງປ່າ ຈົ່ງໄປເພື່ອແກ້ໄຂປົກກະຕິຂອງສັດປ່າ ແກ້ໄຂຄວາມສັບສົນຂອງສັດປ່າ ແລະ ແກ້ໄຂຄວາມກະວົນກະວາຍ ຄວາມລຳບາກໃຈແລະຄວາມຮ້ອນຮົນໃຈຂອງສັດປ່າ

ເພື່ອໃຫ້ຊ້າງປ່ານັ້ນຍິນດີໃນແດນເຮືອນ ໃຫ້ເພີດເພີນໃນປົກກະຕິທີ່ມະນຸດຕ້ອງການເທີ້ນ"

ຄວານຊ້າງຮັບພຣະຣາຊະໂອງການແລ້ວ ຈຶ່ງຝັງເສົາຕະລຸງໃຫຍ່ລົງໃນແຜ່ນດິນ ລ່າມຄໍຊ້າງປ່າໄວ້ແນວໜັ້ນຄົງ ເພື່ອແກ້ໄຂປົກກະຕິຂອງສັດປ່າ ແກ້ໄຂຄວາມສັບສົນຂອງສັດປ່າ ແລະແກ້ໄຂຄວາມກະວົນກະວາຍ ຄວາມລຳບາກໃຈແລະຄວາມຮ້ອນຮົນໃຈຂອງສັດປ່າ ເພື່ອໃຫ້ຊ້າງປ່ານັ້ນຍິນດີໃນແດນເຮືອນ ໃຫ້ເພີດເພີນໃນປົກກະຕິທີ່ມະນຸດຕ້ອງການ ຄວານຊ້າງ ຮ້ອງຮຽກຊ້າງປ່ານັ້ນດ້ວຍຄຳບໍ່ມີໂທດ ມ່ວນຫູ ໜ້າຮັກ ຈັບໃຈ ເປັນພາສາຂອງຊາວເມືອງ ຄົນສ່ວນຫຼາຍຮັກແພງພໍໃຈ ຍ້ອນຊ້າງປ່າຖືກຄວານຊ້າງຮ້ອງຮຽກຢູ່ດ້ວຍຄຳບໍ່ມີໂທດ ມ່ວນຫູ ໜ້າຮັກ ຈັບໃຈເປັນພາສາຂອງຊາວເມືອງ ຄົນສ່ວນຫຼາຍຮັກແພງພໍໃຈເຫັນປານນັ້ນ ຊ້າງຈຶ່ງຕັ້ງໃຈຟັງ ຕັ້ງໃຈເພື່ອຈະຮຽນຮູ້ ຄວານຊ້າງຈຶ່ງຕື່ມອາຫານ ຄື ຫຍ້າແລະນ້ຳໃຫ້ຊ້າງນັ້ນຍິ່ງຂຶ້ນ

ອັກຄິເວດສະນະ ຍ້ອນຊ້າງປ່າຮັບອາຫານ ຄື ຫຍ້າແລະນ້ຳຂອງຄວານຊ້າງ ຄວານຊ້າງຈຶ່ງມີຄວາມຄິດແນວນີ້ວ່າ "ບັດນີ້ ຊ້າງປ່າຈັກດຳລົງຊີບຢູ່ໄດ້ລະ" ຈຶ່ງໃຫ້ຊ້າງປ່ານັ້ນເຝິກຍິ່ງຂຶ້ນດ້ວຍສັ່ງວ່າ "ເຈົ້າຈົ່ງຮັບໄປ ເຈົ້າຈງວາງລົງ " ຍ້ອນຊ້າງຫຼວງເຮັດຕາມຄຳສັ່ງ ຮັບເຮັດຕາມໂອວາດຂອງຄວານຊ້າງໃນການຮັບ ແລະ ການວາງ ຄວານຊ້າງຈຶ່ງໃຫ້ຊ້າງນັ້ນເຝິກຍິ່ງຂຶ້ນດ້ວຍສັ່ງວ່າ "ເຈົ້າຈົ່ງຍ່າງໄປ ເຈົ້າຈົ່ງຖອຍກັບ" ຍ້ອນຊ້າງຫຼວງເຮັດຕາມຄຳສັ່ງ ຮັບເຮັດຕາມໂອວາດຂອງຄວານຊ້າງໃນການຍ່າງໄປແລະການຖອຍກັບ ຄວານຊ້າງຈຶ່ງໃຫ້ຊ້າງນັ້ນເຝິກຍິ່ງຂຶ້ນດ້ວຍສັ່ງວ່າ "ເຈົ້າຈົ່ງຍືນຂຶ້ນ ເຈົ້າຈົ່ງໝອບລົງ" ຍ້ອນຊ້າງຫຼວງເຮັດຕາມຄຳສັ່ງ ຮັບເຮັດຕາມໂອວາດຂອງຄວານຊ້າງໃນການຍືນແລະການໝອບ ຄວານຊ້າງຈຶ່ງໃຫ້ຊ້າງນັ້ນເຝິກຍິ່ງຂຶ້ນຈົນເຖິງຂັ້ນທີ່ຊື່ວ່າອາເນຍຊະ (ບໍ່ຫວັ່ນໄຫວ) ຄື ມັດໂລ່ໃຫຍ່ໄວ້ທີ່ງວງຊ້າງນັ້ນ ຈັດບຸຣຸດຖືຫອກຊັດ ນັ່ງເທິງຄໍຊ້າງ ຈັດບຸຣຸດຖືຫອກຊັດຫຼາຍຄົນຢືນອ້ອມຮອບ ສ່ວນຄວານຊ້າງຖືຂໍງ້າວຍາວ ຢືນຢູ່ຂ້າງໜ້າຊ້າງນັ້ນໄດ້ຮັບການເຝິກເຖິງຂັ້ນອາເນຍຊະຢູ່ ຈຶ່ງບໍ່ຍັບຕີນໜ້າ ບໍ່ຍັບຕີນຫຼັງ ບໍ່ຍັບກາຍໄປຂ້າງໜ້າ ບໍ່ຍັບກາຍໄປຂ້າງຫຼັງ ບໍ່ໂຍກຫົວ ບໍ່ຟັດຫູ ບໍ່ຄວ່າງງາ ບໍ່ແກວ່ງຫາງ ບໍ່ຟາດງວງ ເປັນຊ້າງຫຼວງຜູ້ອົດທົນຕໍ່ການຖືກຫອກສຽບແທງ ຖືກດາບຟັນ ຖືກລູກສອນສຽບແທງ ແລະຖືກເຄື່ອງປະຫານຂອງສັດຕູ ອົດທົນຕໍ່ສຽງອຶກກະທຶກແຫ່ງກອງເສິກ ມະໂຫຣະທຶກ ສັງ ແລະ ກອງນ້ອຍກຳຈັດນິໄສດື້ດ້ານທຸກແນວແລະໝົດພະຍົດ ຈຶ່ງນັບວ່າ "ເປັນຊ້າງສົມຄວນແກ່ພຣະຣາຊາ ອັນພຣະຣາຊາຄວນໃຊ້ສອຍ ເປັນອົງສົມບັດຂອງພຣະຣາຊາ" ແມ່ນສັນໃດ

[໔໑໗] ອັກຄິເວດສະນະ ຕະຖາຄົດ໊ກໍຄືກັນສັນນັ້ນແລ ອຸບັດຂຶ້ນມາໃນໂລກນີ້ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍຕົນເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ[໒] ໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ຕະຖາຄົດຮູ້ແຈ້ງໂລກນີ້ພ້ອມ

ທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດດ້ວຍຕົນເອງແລ້ວປະກາດໃຫ້ຜູ້ອື່ນຮູ້ຕາມ ສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ປະກາດພົມມະຈັນ ພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ຄະຫະບໍດີ ບຸດຄະຫະບໍດີ ຫຼື ອະນຸຊົນ (ຄົນຜູ້ເກີດພາຍຫຼັງ) ໃນຕະກູນໃດຕະກູນໜຶ່ງ ໄດ້ສະດັບທຳນັ້ນແລ້ວ ເກີດສັດທາໃນຕະຖາຄົດ ເມື່ອມີສັດທາຍ່ອມຄິດວ່າ "ການຢູ່ຄອງເຮືອນເປັນເລື້ອງອຶດອັດ ເປັນທາງມາແຫ່ງທຸລີ ການບວດເປັນທາງປອດໂປ່ງ ການທີ່ບຸກຄົນຜູ້ຢູ່ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນຄົບຖ້ວນ ຄືຫອຍສັງຂັດ ບໍ່ແມ່ນເຮັດໄດ້ງ່າຍ ທາງທີ່ດີ ເຮົາຄວນແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດອອກຈາກເຮືອນບວດເປັນບັນພະຊິດ"

ຕໍ່ມາ ເຂົາລະຖິ້ມກອງໂພຄະສົມບັດນ້ອຍໃຫຍ່ ແລະເຄືອຍາດນ້ອຍໃຫຍ່ ແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ ດ້ວຍເຫດພຽງທໍ່ນີ້ແລ ເຂົາຊື່ວ່າເປັນອະຣິຍະສາວົກ ຢູ່ໃນກາງແຈ້ງ ຄວາມຈິງ ເທວະດາແລະມະນຸດທັງຫຼາຍຍັງຫ່ວງຖິ່ນຄືການມະຄຸນ ໕ ຢູ່ ຕະຖາຄົດຈຶ່ງແນະນຳທ່ານໃຫ້ຍິ່ງຂຶ້ນໄປອີກວ່າ

"ມາເທີ້ນ ພິກຂຸ ທ່ານຈົ່ງເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ ຈົ່ງເປັນຜູ້ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ"

ອັກຄິເວດສະນະ ຍ້ອນອະຣິຍະສາວົກເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ ເປັນຜູ້ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານ ສຶກສາໃນສິກຂາບົດທັງຫຼາຍໄດ້ ຕະຖາຄົດຈຶ່ງແນະນຳທ່ານໃຫ້ຍິ່ງຂຶ້ນໄປອີກວ່າ "ມາເທີ້ນ ພິກຂຸ ທ່ານຈົ່ງເປັນຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍ ເຫັນຮູບທາງຕາແລ້ວບໍ່ໂຮມຖື ຯລຯ

[໘໑໗] ພິກຂຸນັ້ນ ລະນິວອນ ໕ ນີ້ ອັນເປັນເຄື່ອງເສົ້າໝອງແຫ່ງຈິດ ເປັນເຄື່ອງທອນປັນຍາໃຫ້ຖອຍກຳລັງໄດ້ແລ້ວ ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ເພິ່ງກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ຯລຯ

ພິຈາລະນາເຫັນຈິດໃນຈິດຢູ່ ຯລຯ

ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ເພິ່ງກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້

ອັກຄິເວດສະນະ ຄວານຊ້າງຝັງເສົາຕະລຸງໃຫຍ່ລົງໃນແຜ່ນດິນ ລ່າມຄໍຊ້າງປ່າໄວ້ແນວໝັ້ນຄົງ ເພື່ອແກ້ໄຂປົກກະຕິນິໄສຂອງສັດປ່າ ແກ້ໄຂຄວາມສັບສົນຂອງສັດປ່າ ແລະແກ້ໄຂຄວາມກະວົນກະວາຍ ຄວາມລຳບາກໃຈແລະຄວາມຮ້ອນຮົນໃຈຂອງສັດປ່າ ເພື່ອໃຫ້ຊ້າງປ່ານັ້ນຍິນດີໃນແດນເຮືອນ ໃຫ້ເພີດເພີນໃນປົກກະຕິທີ່ມະນຸດຕ້ອງການ ແມ່ນສັນໃດ ອະຣິຍະສາວົກກໍຄືກັນສັນນັ້ນ ຊື່ວ່າມັດໃຈໄວ້ແລ້ວກັບສະຕິປັດຖານ ໔ ນີ້ ເພື່ອແກ້ໄຂປົກກະຕິທີ່ຍັງມັດພັນ ຢູ່ກັບເຮືອນ ແກ້ໄຂຄວາມສັບສົນທີ່ຍັງມັດພັນຢູ່ກັບເຮືອນ ແກ້ໄຂຄວາມກະວົນກະວາຍ ຄວາມລຳບາກໃຈແລະຄວາມຮ້ອນຮົນໃຈທີ່ມັດພັນຢູ່ກັບເຮືອນ ເພື່ອບັນລຸຍາຍະທຳ ເພື່ອເຮັດໃຫ້ແຈ້ງນິບພານ

[໔໔໐] ຕະຖາຄົດຈຶ່ງແນະນຳທ່ານໃຫ້ຍິ່ງຂຶ້ນໄປອີກວ່າ "ມາເທີ້ນພິກຂຸ ທ່ານຈົ່ງພິຈາລະນາເຫັນກາຍໃນກາຍຢູ່ເທີ້ນ ແຕ່ຢ່ານຶກເຖິງວິຕົກທີ່ກ່ຽວຂ້ອງກັບກາຍເລີຍ

ຈົ່ງພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ເທີ້ນ ຯລຯ
ຈົ່ງພິຈາລະນາເຫັນຈິດໃນຈິດຢູ່ເທີ້ນ ຯລຯ
ຈົ່ງພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ເທີ້ນ ແຕ່ຢ່ານຶກເຖິງວິຕົກທີ່ກ່ຽວຂ້ອງກັບທຳເລີຍ

ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸນັ້ນ ຍ່ອມບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸຈະຕຸດຖະຊານ ຯລຯ ຢູ່

ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັງເນີນ ປາສະຈາກຄວາມເສົ້າໝອງອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດໄປເພື່ອປຸບເພນິວາສານຸດສະຕິຍານ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໔ ຊາດແດ່ ຯລຯ ທ່ານຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້

[໔໔໑] ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ

ຯລຯ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳແນວນີ້

ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັງເນີນ ປາສະຈາກຄວາມເສົ້າໝອງອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອອາສະວັກຂະຍະຍານ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸທັຍ ນີ້ທຸກຂະນິໂຣທະ ນີ້ທຸກຂະ

ນິໂຣທະຄາມິນີປະຕິປະທາ ນີ້ອາສະວະ ນີ້ອາສະວະສະມຸໄທ ນີ້ອາສະວະນິໂຣດ ນີ້ອາສະວະທຸກາ ຂະນິໂຣທະຄາມິນີປະຕິປະທາ" ເມື່ອທ່ານຮູ້ເຫັນຢູ່ແນວນີ້ ຈິດຍ່ອມລຸດພົ້ນຈາກກາມາສະຫວະ ພະວາສະຫວະ ແລະ ອະວິດຊາສະຫວະ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ "ລຸດພົ້ນແລ້ວ"

ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ພິກຂຸນັ້ນ ເປັນຜູ້ອົດທົນ ຄື ມີຊາດຂອງຜູ້ອົດກັ້ນຕໍ່ຄວາມໜາວ ຄວາມຮ້ອນ ຄວາມຫິວ ຄວາມຢາກ ຕໍ່ສຳຜັດອັນເກີດຈາກເຫລືອບຍຸງ ລົມ ແດດ ແລະ ສັດເລືອຄານທັງຫຼາຍ ຕໍ່ຄຳເວົ້າທີ່ກ່າວຮ້າຍ ຄຳເວົ້າທີ່ໃສ່ຮ້າຍ ຕໍ່ທຸກຂະເວທະນາອັນແຮງກ້າ ຢ່າງໜັກ ເຜັດຮ້ອນ ອັນມີໃນສະຣີຣະທີ່ເກີດຂຶ້ນແລ້ວ ຕໍ່ຄວາມບໍ່ສຸກສະບາຍ ຕໍ່ຄວາມ ບໍ່ພໍໃຈ ພໍຈະພາກຊີວິດໄດ້ ພິກຂຸນັ້ນກຳຈັດຣາຄະ ໂທສະ ໂມຫະທັງປວງແລະກຳຈັດກິເລດພຽງດັ່ງນ້ຳຝາດໄດ້ແລ້ວ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກສິນາ ຄວນແກ່ການທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

[໔໔໔] ອັກຄິເວດສະນະ ຖ້າຊ້າງຫຼວງແກ່ທີ່ຄວານຊ້າງຍັງບໍ່ໄດ້ເຝິກ ບໍ່ໄດ້ຫັດ ລົ້ມລົງ (ຕາຍ) ຍ່ອມເຖິງການນັບວ່າ "ຊ້າງຫຼວງແກ່ລົ້ມແນວບໍ່ໄດ້ເຝິກ"

ຖ້າຊ້າງຫຼວງລຸ້ນກາງ ຯລຯ

ຖ້າຊ້າງຫຼວງລຸ້ນໜຸ່ມທີ່ຄວານຊ້າງຍັງບໍ່ໄດ້ເຝິກ ບໍ່ໄດ້ຫັດ ລົ້ມລົງ ຍ່ອມເຖິງການນັບວ່າ "ຊ້າງຫຼວງໜຸ່ມລົ້ມແນວບໍ່ໄດ້ເຝິກ" ແມ່ນສັນໃດ

ຖ້າພິກຂຸປູນເຖຣະຍັງບໍ່ສິ້ນອາສະວະມໍຣະນະພາບລົງ ຍ່ອມເຖິງການນັບວ່າ "ພິກຂຸປູນເຖຣະ ມໍຣະນະພາບລົງແນວບໍ່ໄດ້ເຝິກ"

ຖ້າພິກຂຸປູນມັດຊິມະ ຯລຯ

ຖ້າພິກຂຸປູນນະວະກະຍັງບໍ່ສິ້ນອາສະວະມໍຣະນະພາບລົງ ຍ່ອມເຖິງການນັບວ່າ "ພິກຂຸປູນນະວະກະມໍຣະນະພາບລົງແນວບໍ່ໄດ້ເຝິກ" ຄືກັນສັນນັ້ນ

ອັກຄິເວດສະນະ ຖ້າຊ້າງຫຼວງແກ່ທີ່ຄວານຊ້າງເຝິກດີແລ້ວ ຫັດດີແລ້ວ ລົ້ມລົງ ຍ່ອມເຖິງການນັບວ່າ "ຊ້າງຫຼວງແກ່ລົ້ມທີ່ເຝິກແລ້ວ"

ຖ້າຊ້າງຫຼວງລຸ້ນກາງ ຯລຯ

ຖ້າຊ້າງຫຼວງໜຸ່ມທີ່ຄວານຊ້າງເຝິກດີແລ້ວ ຫັດດີແລ້ວ ລົ້ມລົງ ຍ່ອມເຖິງການນັບວ່າ "ຊ້າງຫຼວງໜຸ່ມລົ້ມແນວເຝິກແລ້ວ ແມ່ນສັນໃດ

ຖ້າພິກຂຸປູນເຖຣະຜູ້ສິ້ນອາສະວະແລ້ວມໍຣະນະພາບລົງ ຍ່ອມເຖິງການນັບວ່າ "ພິກຂຸປູນເຖຣະ ມໍຣະນະພາບລົງທີ່ເຝິກແລ້ວ"

ຖ້າພິກຂຸປູນມັດຊິມະ ໗ລ໗

ຖ້າພິກຂຸປູນນະວະກະຜູ້ເປັນຂີນາສົບມໍຣະນະພາບລົງ ຍ່ອມເຖິງການນັບວ່າ "ພິກຂຸປູນນະວະກະມໍຣະນະພາບລົງແນວເຝິກແລ້ວ" ຄືກັນສັນນັ້ນ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ອະຈິຣະວະຕະ ສະມະນຸດເທດມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ທັນຕະພູມິສູດທີ ໕ ຈົບ**

# ໖. ພູມິຊະສູດ

## ວ່າດ້ວຍພຣະພູມິຊະ

[໔໔໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ເມື່ອເວລາເຊົ້າ ທ່ານພຣະພູມິຊະ ຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປສູ່ວັງຂອງຊະຍະເສນຣາດຊະກຸມານ ແລ້ວນັ່ງເທິງອາສະນະທີ່ປູລາດໄວ້ແລ້ວ ລຳດັບນັ້ນ ຊະຍະເສນຣາດຊະກຸມານສະເດັດເຂົ້າໄປຫາທ່ານພຣະພູມິຊະຮອດບ່ອນຢູ່ແລ້ວໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ປະທັບນັ່ງຢູ່ບ່ອນສົມຄວນ

ຊະຍະເສນຣາດຊະກຸມານໄດ້ຮັບສັ່ງກັບທ່ານພຣະພູມິຊະວ່າ "ຂ້າແດ່ ທ່ານພຣະພູມິຊະ ມີສະມະນະພາມພວກໜຶ່ງ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ຖ້າແມ່ນຊົນທັງຫຼາຍຕັ້ງຄວາມຫວັງແລ້ວຈຶ່ງປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນທັງຕັ້ງຄວາມຫວັງແລະບໍ່ຕັ້ງຄວາມຫວັງແລ້ວ ປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້"

ໃນເລື້ອງນີ້ ພຣະສາດສະດາຂອງທ່ານພຣະພູມິຊະມີວາທະແນວໃດ ມີທິດຖິແນວໃດຕັດສອນໄວ້ແນວໃດ?"

ທ່ານພຣະພູມິຊະຖວາຍພຣະພອນວ່າ "ພຣະຣາດຊະກຸມານ ເລື້ອງນີ້ອາຕະມາພາບບໍ່ໄດ້ສະດັບຮັບມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າເລີຍ ແຕ່ເປັນໄປໄດ້ທີ່ພຣະຜູ້ມີພຣະພາກເຈົ້າເພິ່ງຊົງພະຍາກອນແນວນີ້ວ່າ "ຖ້າແມ່ນຊົນທັງຫຼາຍຕັ້ງຄວາມຫວັງແລ້ວ ປະພຶດພົມມະຈັນໂດຍບໍ່ແຍບຄາຍ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວປະພຶດພົມມະຈັນໂດຍບໍ່ແຍບຄາຍ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນທັງຕັ້ງຄວາມຫວັງ ແລະ ບໍ່ຕັ້ງຄວາມຫວັງແລ້ວ ປະພຶດພົມມະຈັນໂດຍບໍ່ແຍບຄາຍ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວປະພຶດພົມມະຈັນໂດຍບໍ່ແຍບຄາຍ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນຊົນທັງຫຼາຍຕັ້ງຄວາມຫວັງແລ້ວປະພຶດພົມມະຈັນໂດຍແຍບຄາຍ ພວກເຂົາກໍສາມາດບັນລຸຜົນໄດ້

ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວ ປະພຶດພົມມະຈັນໂດຍແຍບຄາຍ ພວກເຂົາກໍສາມາດບັນລຸຜົນໄດ້

ຖ້າແມ່ນທັງຕັ້ງຄວາມຫວັງ ແລະ ບໍ່ຕັ້ງຄວາມຫວັງແລ້ວປະພຶດພົມມະຈັນໂດຍແຍບຄາຍ ພວກເຂົາກໍສາມາດບັນລຸຜົນໄດ້

ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວປະພຶດພົມມະຈັນໂດຍແຍບຄາຍ ພວກເຂົາກໍສາມາດບັນລຸຜົນໄດ້"

ພຣະຣາດຊະກຸມານ ເລື້ອງນີ້ອາຕະມາພາບບໍ່ໄດ້ສະດັບຮັບມາສະເພາະພຣະພັກພຣະຜູ້ມີພຣະພາກເລີຍ ແຕ່ເປັນໄປໄດ້ທີ່ພຣະຜູ້ມີພຣະພາກເຈົ້າເພິ່ງຊົງພະຍາກອນແນວນີ້"

ຊະຍະເສນຣາດຊະກຸມານຕັດວ່າ "ຖ້າພຣະສາດສະດາຂອງທ່ານພຣະພູມິຊະມີວາທະແນວນີ້ ມີທິດຖິແນວນີ້ ຕັດສອນໄວ້ແນວນີ້ ພຣະສາດສະດາຂອງທ່ານພຣະພູມິຊະ ຖ້າວ່າຈະມີຄວາມຮູ້ເໜືອສະມະນະພາມທັງປວງແນ່ແທ້"

ລຳດັບນັ້ນ ຊະຍະເສນຣາດຊະກຸມານ ຊົງອັງຄາດທ່ານພຣະພູມິຊະດ້ວຍພັດຕາຫານໃນພາຊະນະອັນເປັນສ່ວນຂອງພຣະອົງເອງເລີຍຢ່າງແນ່ນອນ

[໔໘] ຄັ້ງນັ້ນແລ ທ່ານພຣະພູມິຊະກັບຈາກບິນທະບາດ ພາຍຫຼັງສັນພັດຕາຫານສຳເລັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງໃນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂອກາດ ເມື່ອເຊົ້ານີ້ ຂ້າພຣະອົງຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປສູ່ວັງຂອງຊະຍະເສນຣາດຊະກຸມານ ແລ້ວນັ່ງເທິງອາສະນະທີ່ປູລາດໄວ້ແລ້ວ ລຳດັບນັ້ນ ຊະຍະເສນຣາດຊະກຸມານສະເດັດເຂົ້າມາຫາຂ້າພຣະອົງ ແລ້ວໄດ້ຕັດສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ປະທັບນັ່ງໃນທີ່ສົມຄວນ ໄດ້ຮັບສັ່ງກັບຂ້າພຣະອົງວ່າ "ຂ້າແດ່ ທ່ານພຣະພູມິຊະ ມີສະມະນະພາມພວກໜຶ່ງ ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ຖ້າແມ່ນຊົນທັງຫຼາຍຕັ້ງຄວາມຫວັງແລ້ວ ປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນທັງຕັ້ງຄວາມຫວັງແລະບໍ່ຕັ້ງຄວາມຫວັງແລ້ວປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ໃນເລື້ອງນີ້ ພຣະສາດສະດາຂອງທ່ານພຣະພູມິຊະມີວາທະແນວໃດ ມີທິດຖິແນວໃດຕັດສອນໄວ້ແນວໃດ?"

ເມື່ອຊະຍະເສນຣາດຊະກຸມານຮັບສັ່ງແນວນີ້ແລ້ວ ຂ້າພຣະອົງໄດ້ຖວາຍພຣະພອນວ່າ "ພຣະຣາດຊະກຸມານ ເລື້ອງນີ້ ອາຕະມາພາບບໍ່ໄດ້ສະດັບຮັບມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າເລີຍ ແຕ່ເປັນໄປໄດ້ທີ່ພຣະຜູ້ມີພຣະພາກເຈົ້າເພິ່ງຊົງພະຍາກອນແນວນີ້ວ່າ "ຖ້າແມ່ນຊົນທັງຫຼາຍຕັ້ງຄວາມຫວັງແລ້ວ ປະພຶດພົມມະຈັນໂດຍບໍ່ແຍບຄາຍ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວ ປະພຶດພົມມະຈັນໂດຍບໍ່ແຍບຄາຍ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນທັງຕັ້ງຄວາມຫວັງ ແລະ ບໍ່ຕັ້ງຄວາມຫວັງແລ້ວ ປະພຶດພົມມະຈັນໂດຍບໍ່ແຍບຄາຍ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວປະພຶດພົມມະຈັນໂດຍບໍ່ແຍບຄາຍ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນຕັ້ງຄວາມຫວັງແລ້ວ ຈຶ່ງປະພຶດພົມມະຈັນໂດຍແຍບຄາຍ ພວກເຂົາກໍສາມາດບັນລຸຜົນໄດ້

ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວ ຯລຯ

ຖ້າແມ່ນທັງຕັ້ງຄວາມຫວັງແລະບໍ່ຕັ້ງຄວາມຫວັງແລ້ວ ຯລຯ

ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວປະພຶດພົມມະຈັນໂດຍແຍບຄາຍ ພວກເຂົາກໍສາມາດບັນລຸຜົນໄດ້"

ເລື້ອງນີ້ ອາຕະມາພາບບໍ່ໄດ້ສະດັບຮັບມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າເລີຍ ແຕ່ເປັນໄປໄດ້ທີ່ພຣະຜູ້ມີພຣະພາກເຈົ້າເພິ່ງຊົງພະຍາກອນແບບນີ້"

ຊະຍະເສນຣາດຊະກຸມານຮັບສັ່ງວ່າ "ຖ້າພຣະສາດສະດາຂອງທ່ານພຣະພູມິຊະຜູ້ມີວາທະແບບນີ້ ມີທິດຖິແບບນີ້ ຕັດສອນໄວ້ແບບນີ້ ພຣະສາດສະດາຂອງທ່ານພຣະພູມິຊະ ຖ້າວ່າຈະມີຄວາມຮູ້ເໜືອສະມະນະພາມທັງປວງແນ່ແທ້" ຂ້າພຣະອົງຖືກຖາມແບບນີ້ແລ້ວ ເມື່ອພະຍາກອນແບບນີ້ ຊື່ວ່າເວົ້າກົງຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄຳຕົວະ ຊື່ວ່າ ເປັນຜູ້ເວົ້າແບບສົມເຫດສົມຜົນ ຫຼື ບໍ່ມີແດ່ບໍ? ທີ່ຄຳກ່າວເຊັ່ນນັ້ນ ແລະຄຳທີ່ກ່າວຕໍ່ ໆ ກັນມາຈະເປັນເຫດໃຫ້ຖືກຕຳໜິໄດ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພູມິຊະ ຊ່າງເທີ້ນ ທ່ານຖືກຖາມແບບນັ້ນແລ້ວ ເມື່ອພະຍາກອນແບບນັ້ນ ຊື່ວ່າ ເວົ້າກົງຕາມທີ່ເຮົາກ່າວໄວ້ ບໍ່ຊື່ວ່າກ່າວຕູ່ເຮົາດ້ວຍຄຳຕົວະ ຊື່ວ່າ ເປັນຜູ້ເວົ້າແບບສົມເຫດສົມຜົນ ບໍ່ມີເລີຍທີ່ຄຳກ່າວເຊັ່ນນັ້ນແລະຄຳທີ່ກ່າວຕໍ່ ໆ ກັນມາ ຈະເປັນເຫດໃຫ້ຖືກຕຳໜິໄດ້ ແຕ່ສະມະນະ ຫຼື ພາມພວກໃດພວກໜຶ່ງເປັນມິດສາທິດຖິ (ມີຄວາມເຫັນຜິດ) ເປັນມິດສາສັງກັບປະ (ມີຄວາມດຳຣິຜິດ) ເປັນມິດສາວາຈາ (ມີການເຈລະຈາຜິດ) ເປັນມິດສາກຳມັນຕະ (ມີການງານຜິດ) ເປັນມິດສາອາຊີວະ (ມີການລ້ຽງຊີບຜິດ) ເປັນມິດສາວາຍາມະ(ມີຄວາມພຽນຜິດ) ເປັນມິດສາສະຕິ (ມີຄວາມຣະນຶກຜິດ) ເປັນມິດສາສະມາທິ (ມີຄວາມຕັ້ງໃຈຜິດ)

ຖ້າແມ່ນສະມະນະຫຼືພາມເຫຼົ່ານັ້ນ ຕັ້ງຄວາມຫວັງແລ້ວຈຶ່ງປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນທັງຕັ້ງຄວາມຫວັງ ແລະ ບໍ່ຕັ້ງຄວາມຫວັງແລ້ວປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້ ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນອຸບາຍອັນບໍ່ແຍບຄາຍ ພວກເຂົາຈຶ່ງບໍ່ສາມາດບັນລຸຜົນໄດ້"

[໔໒໕] ພູມິຊະ ປຽບຄື ບຸຣຸດຜູ້ຕ້ອງການນ້ຳມັນ ສະແຫວງຫານ້ຳມັນ ທ່ຽວເສາະຫານ້ຳມັນ ເຂ່ຍຊາຍລົງໃນຮາງແລ້ວ ເອົານ້ຳພົມໃສ່ນຳ ຄັ້ນໄປນຳ

ຖ້າແມ່ນບຸຣຸດນັ້ນ ຕັ້ງຄວາມຫວັງແລ້ວເຂ່ຍຊາຍລົງໃນຮາງ ເອົານ້ຳພົມໃສ່ນຳ ຄັ້ນໄປ ນຳເຂົາກໍບໍ່ສາມາດໄດ້ນ້ຳມັນຢ່າງແນ່ນອນ

ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວເຂ່ຍຊາຍລົງໄປໃນຮາງ ເອົານ້ຳພົມໃສ່ນຳ ຄັ້ນໄປນຳ ເຂົາກໍບໍ່ສາມາດໄດ້ນ້ຳມັນຢ່າງແນ່ນອນ

ຖ້າແມ່ນທັງຕັ້ງຄວາມຫວັງ ແລະ ບໍ່ຕັ້ງຄວາມຫວັງແລ້ວເຂ່ຍຊາຍລົງໃນຮາງ ເອົານ້ຳພົມໃສ່ນຳ ຄັ້ນໄປນຳ ເຂົາກໍບໍ່ສາມາດໄດ້ນ້ຳມັນຢ່າງແນ່ນອນ

ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວເຂ່ຍຊາຍລົງໃນຮາງ ເອົານຳພົມໃສ່ນຳ ຄັ້ນໄປນຳ ເຂົາກໍບໍ່ສາມາດໄດ້ນ້ຳມັນຢ່າງແນ່ນອນເຊັ່ນກັນ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນອຸບາຍອັນບໍ່ແຍບຄາຍ ເຂົາຈຶ່ງບໍ່ສາມາດໄດ້ນ້ຳມັນ ແມ່ນສັນໃດ

ສະມະນະ ຫຼື ພາມພວກໃດພວກໜຶ່ງ ກໍຄືກັນສັນນັ້ນ ເປັນມິດສາທິດຖິ ເປັນມິດສາສັງກັບປະ ເປັນມິດສາວາຈາ ເປັນມິດສາກຳມັນຕະ ເປັນມິດສາອາຊີວະ ເປັນມິດສາວາຍາມະ ເປັນມິດສາສະຕິ ເປັນມິດສາສະມາທິ

ຖ້າແມ່ນສະມະນະ ຫຼື ພາມເຫຼົ່ານັ້ນ ຕັ້ງຄວາມຫວັງແລ້ວຈຶ່ງປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນທັງຕັ້ງຄວາມຫວັງ ແລະ ບໍ່ຕັ້ງຄວາມຫວັງແລ້ວປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນອຸບາຍອັນບໍ່ແຍບຄາຍ ພວກເຂົາຈຶ່ງບໍ່ສາມາດບັນລຸຜົນໄດ້

ປຽບຄື ບຸຣຸດຜູ້ຕ້ອງການນົມສົດ ສະແຫວງຫານົມສົດ ທ່ຽວເສາະຫານົມສົດ ແຕ່ຮີດ (ນົມສົດ) ຈາກເຂົາງົວແມ່ລູກອ່ອນ

ຖ້າແມ່ນບຸຣຸດນັ້ນ ຕັ້ງຄວາມຫວັງແລ້ວຮີດເອົາຈາກເຂົາງົວແມ່ລູກອ່ອນ ເຂົາກໍບໍ່ສາມາດໄດ້ນົມສົດ

ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວຮີດເອົາຈາກເຂົາງົວແມ່ລູກອ່ອນ ເຂົາກໍບໍ່ສາມາດໄດ້ນົມສົດ

ຖ້າແມ່ນທັງຕັ້ງຄວາມຫວັງ ແລະ ບໍ່ຕັ້ງຄວາມຫວັງ ຯລຯ
ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວຮີດເອົາຈາກເຂົາຂອງງົວແມ່ລູກອ່ອນ ເຂົາກໍບໍ່ສາມາດໄດ້ນົມສົດ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນອຸບາຍອັນບໍ່ແຍບຄາຍ ເຂົາຈຶ່ງບໍ່ສາມາດໄດ້ນົມສົດ ແມ່ນສັນໃດ

ສະມະນະ ຫຼື ພາມພວກໃດພວກໜຶ່ງ ກໍຄືກັນສັນນັ້ນ ເປັນມິດສາທິດຖິ ຯລຯ ເປັນມິດສາສະມາທິ

ຖ້າແມ່ນສະມະນະ ຫຼື ພາມເຫຼົ່ານັ້ນ ຕັ້ງຄວາມຫວັງແລ້ວປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້
ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້
ຖ້າແມ່ນທັງຕັ້ງຄວາມຫວັງແລະບໍ່ຕັ້ງຄວາມຫວັງແລ້ວປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້
ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຂໍ້ນັ້ນ ຍ້ອນເຫດໃດ?
ຍ້ອນອຸບາຍອັນບໍ່ແຍບຄາຍ ພວກເຂົາຈຶ່ງບໍ່ສາມາດບັນລຸຜົນໄດ້

[໔໔໖] ພູມິຊະ ປຽບຄືບຸຣຸດຜູ້ຕ້ອງການເນີຍຂົ້ນ ສະແຫວງຫາເນີຍຂົ້ນ ທ່ຽວເສາະຫາເນີຍຂົ້ນ ຖອກນ້ຳລົງໃນອ່າງແລ້ວ ກວນດ້ວຍເຄື່ອງກວນ

ຖ້າແມ່ນບຸຣຸດນັ້ນ ຕັ້ງຄວາມຫວັງຖອກນ້ຳລົງໄປໃນອ່າງແລ້ວກວນດ້ວຍເຄື່ອງກວນ ເຂົາກໍບໍ່ສາມາດໄດ້ເນີຍຂົ້ນ
ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວ ຯລຯ
ຖ້າແມ່ນທັງຕັ້ງຄວາມຫວັງແລະບໍ່ຕັ້ງຄວາມຫວັງແລ້ວ ຯລຯ
ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວຖອກນ້ຳລົງໃນອ່າງແລ້ວກວນດ້ວຍເຄື່ອງກວນ ເຂົາກໍບໍ່ສາມາດໄດ້ເນີຍຂົ້ນ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນອຸບາຍອັນບໍ່ແຍບຄາຍ ເຂົາຈຶ່ງບໍ່ສາມາດໄດ້ເນີຍຂົ້ນ ແມ່ນສັນໃດ ສະມະນະຫຼືພາມ

ພວກໃດພວກໜຶ່ງ ກໍຄືກັນສັນນັ້ນ ເປັນມິດສາທິດຖິ ຯລຯ ເປັນມິດສາສະມາທິ

ຖ້າແມ່ນສະມະນະຫຼືພາມເຫຼົ່ານັ້ນ ຕັ້ງຄວາມຫວັງແລ້ວຈຶ່ງປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວ ຯລຯ

ຖ້າແມ່ນທັງຕັ້ງຄວາມຫວັງແລະບໍ່ຕັ້ງຄວາມຫວັງແລ້ວ ຯລຯ

ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວຈຶ່ງປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນອຸບາຍອັນບໍ່ແຍບຄາຍ ພວກເຂົາຈຶ່ງບໍ່ສາມາດບັນລຸຜົນໄດ້

ປຽບຄື ບຸຣຸດຜູ້ຕ້ອງການໄຟ ສະແຫວງຫາໄຟ ທ່ຽວເສາະຫາໄຟ ຈຶ່ງເອົາໄມ້ດິບທີ່ມີຢາງມາເຮັດໄມ້ສີໄຟ ແລ້ວສີໃຫ້ເປັນໄຟ

ຖ້າແມ່ນບຸຣຸດນັ້ນ ຕັ້ງຄວາມຫວັງແລ້ວຈຶ່ງເອົາໄມ້ດິບທີ່ມີຢາງມາເຮັດໄມ້ສີໄຟ ແລ້ວສີໃຫ້ເປັນໄຟ ເຂົາກໍບໍ່ສາມາດໄດ້ໄຟ

ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວ ຯລຯ

ຖ້າແມ່ນທັງຕັ້ງຄວາມຫວັງແລະບໍ່ຕັ້ງຄວາມຫວັງແລ້ວ ຯລຯ

ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວເອົາໄມ້ດິບທີ່ມີຢາງມາເຮັດໄມ້ສີໄຟ ແລ້ວສີໃຫ້ເປັນໄຟ ເຂົາກໍບໍ່ສາມາດໄດ້ໄຟ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນອຸບາຍອັນບໍ່ແຍບຄາຍ ເຂົາຈຶ່ງບໍ່ສາມາດໄດ້ໄຟ ແມ່ນສັນໃດ ສະມະນະຫຼືພາມພວກໃດພວກໜຶ່ງ ກໍຄືກັນສັນນັ້ນ ເປັນມິດສາທິດຖິ ຯລຯ ເປັນມິດສາສະມາທິ

ຖ້າແມ່ນສະມະນະຫຼືພາມເຫຼົ່ານັ້ນ ຕັ້ງຄວາມຫວັງແລ້ວປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວ ຯລຯ

ຖ້າແມ່ນທັງຕັ້ງຄວາມຫວັງແລະບໍ່ຕັ້ງຄວາມຫວັງແລ້ວ ຯລຯ

ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວປະພຶດພົມມະຈັນ ພວກເຂົາກໍບໍ່ສາມາດບັນລຸຜົນໄດ້

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນອຸບາຍອັນບໍ່ແຍບຄາຍ ພວກເຂົາຈຶ່ງບໍ່ສາມາດບັນລຸຜົນໄດ້

ພູມິຊະ ສ່ວນສະມະນະຫຼືພາມພວກໃດພວກໜຶ່ງເປັນສຳມາທິດຖິ ເປັນສຳມາສັງກັປປະ ເປັນສຳມາວາຈາ ເປັນສຳມາກຳມັນຕະ ເປັນສຳມາອາຊີວະ ເປັນສຳມາວາຍາມະ ເປັນສຳມາສະຕິ ເປັນສຳມາສະມາທິ

ຖ້າແມ່ນສະມະນະຫຼືພາມເຫຼົ່ານັ້ນ ຕັ້ງຄວາມຫວັງແລ້ວຈຶ່ງປະພຶດພົມມະຈັນ ພວກເຂົາກໍສາມາດບັນລຸຜົນໄດ້

ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວປະພຶດພົມມະຈັນ ພວກເຂົາກໍສາມາດບັນລຸຜົນໄດ້

ຖ້າແມ່ນທັງຕັ້ງຄວາມຫວັງແລະບໍ່ຕັ້ງຄວາມຫວັງແລ້ວປະພຶດພົມມະຈັນ ພວກເຂົາກໍສາມາດບັນລຸຜົນໄດ້

ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວປະພຶດພົມມະຈັນ ພວກເຂົາກໍສາມາດບັນລຸຜົນໄດ້

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນອຸບາຍອັນແຍບຄາຍ ພວກເຂົາຈຶ່ງສາມາດບັນລຸຜົນໄດ້

[໔໔໗] ພູມິຊະ ປຽບຄື ບຸຣຸດຜູ້ຕ້ອງການນ້ຳມັນ ສະແຫວງຫານ້ຳມັນ ທ່ຽວເສາະຫານ້ຳມັນ ເຄຍແປ້ງງາລົງໃນຮາງແລ້ວ ເອົານ້ຳພົມໃສ່ນຳ ຄັ້ນໄປນຳ

ຖ້າແມ່ນບຸຣຸດນັ້ນ ຕັ້ງຄວາມຫວັງແລ້ວເຄຍແປ້ງງາລົງໃນຮາງ ເອົານ້ຳພົມໃສ່ນຳ ຄັ້ນໄປນຳ ເຂົາກໍສາມາດໄດ້ນ້ຳມັນງາ

ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວ ຯລຯ

ຖ້າແມ່ນທັງຕັ້ງຄວາມຫວັງແລະບໍ່ຕັ້ງຄວາມຫວັງແລ້ວ ຯລຯ

ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວເຄຍແປ້ງງາລົງໃນຮາງ ເອົານ້ຳພົມໃສ່ນຳ ຄັ້ນໄປນຳ ເຂົາກໍສາມາດໄດ້ນ້ຳມັນງາ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນອຸບາຍອັນແຍບຄາຍ ເຂົາຈຶ່ງສາມາດໄດ້ນ້ຳມັນງາ ແມ່ນສັນໃດ ສະມະນະຫຼືພາມພວກໃດພວກໜຶ່ງ ກໍຄືກັນສັນນັ້ນ ເປັນສຳມາທິດຖິ ຯລຯ ເປັນສຳມາສະມາທິ

ຖ້າແມ່ນສະມະນະຫຼືພາມເຫຼົ່ານັ້ນ ຕັ້ງຄວາມຫວັງແລ້ວຈຶ່ງປະພຶດພົມມະຈັນ ພວກເຂົາກໍສາມາດບັນລຸຜົນໄດ້

ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວ ຯລຯ
ຖ້າແມ່ນທັງຕັ້ງຄວາມຫວັງແລະບໍ່ຕັ້ງຄວາມຫວັງແລ້ວ ຯລຯ
ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວປະພຶດພົມມະຈັນ ພວກເຂົາກໍສາມາດບັນລຸຜົນໄດ້

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນອຸບາຍອັນແຍບຄາຍ ພວກເຂົາຈຶ່ງສາມາດບັນລຸຜົນໄດ້

ປຽບຄື ບຸຣຸດຜູ້ຕ້ອງການນົມສົດ ສະແຫວງຫານົມສົດ ທ່ຽວເສາະຫານົມສົດ ຈຶ່ງຮີດ (ນົມສົດ) ຈາກເຕົ້ານົມຂອງງົວແມ່ລູກອ່ອນ

ຖ້າແມ່ນບຸຣຸດນັ້ນ ຕັ້ງຄວາມຫວັງແລ້ວຮີດເອົາຈາກເຕົ້ານົມງົວແມ່ລູກອ່ອນ ເຂົາກໍສາມາດໄດ້ ນົມສົດ
ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວ ຯລຯ
ຖ້າແມ່ນທັງຕັ້ງຄວາມຫວັງແລະບໍ່ຕັ້ງຄວາມຫວັງແລ້ວ ຯລຯ
ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວເພິ່ງຮີດຈາກເຕົ້ານົມງົວແມ່ລູກອ່ອນ ເຂົາກໍສາມາດໄດ້ນົມສົດ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນອຸບາຍອັນແຍບຄາຍ ເຂົາຈຶ່ງສາມາດໄດ້ນົມສົດ ແມ່ນສັນໃດ ສະມະນະຫຼືພາມພວກໃດພວກໜຶ່ງ ກໍຄືກັນສັນນັ້ນ ເປັນສຳມາທິດຖິ ຯລຯ ເປັນສຳມາສະມາທິ

ຖ້າແມ່ນສະມະນະຫຼືພາມເຫຼົ່ານັ້ນ ຕັ້ງຄວາມຫວັງແລ້ວເພິ່ງປະພຶດພົມມະຈັນ ພວກເຂົາກໍສາມາດບັນລຸຜົນໄດ້
ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວ ຯລຯ
ຖ້າແມ່ນທັງຕັ້ງຄວາມຫວັງແລະບໍ່ຕັ້ງຄວາມຫວັງແລ້ວ ຯລຯ
ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວປະພຶດພົມມະຈັນ ພວກເຂົາກໍສາມາດບັນລຸຜົນໄດ້

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນອຸບາຍອັນແຍບຄາຍ ພວກເຂົາຈຶ່ງສາມາດບັນລຸຜົນໄດ້

[໔໔໙] ພູມິຊະ ປຽບຄືບຸຣຸດຜູ້ຕ້ອງການເນີຍຂົ້ນ ສະແຫວງຫາເນີຍຂົ້ນ ທ່ຽວເສາະຫາເນີຍຂົ້ນ ເທນມສົ້ມລົງໃນອ່າງແລ້ວກວນດ້ວຍເຄື່ອງກວນ

ຖ້າແມ່ນບຸຣຸດນັ້ນຕັ້ງຄວາມຫວັງແລ້ວເທນມສົ້ມລົງໃນອ່າງເພິ່ງກວນດ້ວຍເຄື່ອງກວນ ເຂົາກໍສາມາດໄດ້ນົມຂົ້ນ

ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວ ฯລฯ

ຖ້າແມ່ນທັງຕັ້ງຄວາມຫວັງແລະບໍ່ຕັ້ງຄວາມຫວັງແລ້ວ ฯລฯ

ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວເທນມສົ້ມລົງໃນອ່າງແລ້ວກວນດ້ວຍເຄື່ອງກວນ ເຂົາກໍສາມາດໄດ້ນົມຂົ້ນ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນອຸບາຍອັນແຍບຄາຍ ເຂົາຈຶ່ງສາມາດໄດ້ນົມຂົ້ນ ແມ່ນສັນໃດ ສະມະນະຫຼືພາມພວກໃດພວກໜຶ່ງ ກໍຄືກັນສັນນັ້ນ ເປັນສຳມາທິດຖິ ฯລฯ ເປັນສຳມາສະມາທິ

ຖ້າແມ່ນສະມະນະຫຼືພາມເຫຼົ່ານັ້ນ ຕັ້ງຄວາມຫວັງແລ້ວຈຶ່ງປະພຶດພົມມະຈັນ ພວກເຂົາກໍສາມາດບັນລຸຜົນໄດ້

ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວ ฯລฯ

ຖ້າແມ່ນທັງຕັ້ງຄວາມຫວັງແລະບໍ່ຕັ້ງຄວາມຫວັງແລ້ວ ฯລฯ

ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວປະພຶດພົມມະຈັນ ພວກເຂົາກໍສາມາດບັນລຸຜົນໄດ້

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນອຸບາຍອັນແຍບຄາຍ ພວກເຂົາຈຶ່ງສາມາດບັນລຸຜົນໄດ້

ປຽບຄື ບຸຣຸດຜູ້ຕ້ອງການໄຟ ສະແຫວງຫາໄຟ ທ່ຽວເສາະຫາໄຟ ຈຶ່ງເອົາໄມ້ແຫ້ງມາເຮັດໄມ້ສີໄຟ ແລ້ວສີໃຫ້ເປັນໄຟ

ຖ້າແມ່ນບຸຣຸດນັ້ນ ຕັ້ງຄວາມຫວັງແລ້ວ ເອົາໄມ້ແຫ້ງມາເຮັດໄມ້ສີໄຟ ແລ້ວສີໃຫ້ເປັນໄຟ ເຂົາກໍສາມາດໄດ້ໄຟ

ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວ ฯລฯ

ຖ້າແມ່ນທັງຕັ້ງຄວາມຫວັງແລະບໍ່ຕັ້ງຄວາມຫວັງແລ້ວ ฯລฯ

ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວເອົາໄມ້ແຫ້ງມາເຮັດໄມ້ສີໄຟ ແລ້ວສີໃຫ້ເປັນໄຟ ເຂົາກໍສາມາດໄດ້ໄຟ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນອຸບາຍອັນແຍບຄາຍ ເຂົາຈຶ່ງສາມາດໄດ້ໄຟ ແມ່ນສັນໃດ ສະມະນະຫຼືພາມພວກໃດພວກໜຶ່ງ ກໍຄືກັນສັນນັ້ນ ເປັນສຳມາທິດຖິ ຯລຯ ເປັນສຳມາສະມາທິ

ຖ້າແມ່ນສະມະນະຫຼືພາມເຫຼົ່ານັ້ນ ຕັ້ງຄວາມຫວັງແລ້ວປະພຶດພົມມະຈັນ ພວກເຂົາກໍສາມາດບັນລຸຜົນໄດ້

ຖ້າແມ່ນບໍ່ຕັ້ງຄວາມຫວັງແລ້ວ ຯລຯ

ຖ້າແມ່ນທັງຕັ້ງຄວາມຫວັງແລະບໍ່ຕັ້ງຄວາມຫວັງແລ້ວ ຯລຯ

ຖ້າແມ່ນຕັ້ງຄວາມຫວັງກໍບໍ່ແມ່ນ ບໍ່ຕັ້ງຄວາມຫວັງກໍບໍ່ແມ່ນ ແລ້ວປະພຶດພົມມະຈັນ ພວກເຂົາກໍສາມາດບັນລຸຜົນໄດ້

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນອຸບາຍອັນແຍບຄາຍ ພວກເຂົາຈຶ່ງສາມາດບັນລຸຜົນໄດ້

ພູມິຊະ ຖ້າທ່ານເພິ່ງອະທິບາຍອຸປະມາ ໔ ຂໍ້ນີ້ ໃຫ້ແຈ້ງຊັດແກ່ຊະຍະເສນຣາດຊະກຸມານໄດ້ ຊະຍະເສນຣາດຊະກຸມານຈະເພິ່ງເຫຼື້ອມໃສທ່ານແນວໜ້າອັດສະຈັນ ແລະຊະຍະເສນຣາດຊະກຸມານຜູ້ເຫຼື້ອມໃສແລ້ວ ຈະເພິ່ງເຮັດອາການຂອງບຸກຄົນຜູ້ເຫຼື້ອມໃສແກ່ທ່ານ"

ທ່ານພຣະພູມິຊະຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ສະເພາະຂ້າພຣະອົງຈັກອະທິບາຍອຸປະມາ ໔ ຂໍ້ນີ້ອັນໜ້າອັດສະຈັນ ທີ່ຂ້າພຣະອົງຍັງບໍ່ເຄີຍໄດ້ສະດັບມາກ່ອນ ໃຫ້ແຈ້ງຊັດແກ່ຊະຍະເສນຣາດຊະກຸມານ ເໝືອນພຣະຜູ້ມີພຣະພາກເຈົ້າໄດ້ແນວໃດ?"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະພູມິຊະມີໃຈຍິນດີ ຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ພູມິຊະສູດທີ ໖ ຈົບ**

# ໗. ອະນຸຣຸດທະສູດ

## ວ່າດ້ວຍພຣະອະນຸຣຸດທະ

[໔໔໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ຊ່າງໄມ້ຊື່ປັນຈະກັງຄະ ຮຽກຊາຍຄົນໜຶ່ງມາສັ່ງວ່າ

"ມາເທີ້ນ ທ່ານຜູ້ຈະເລີນທັງຫຼາຍ ທ່ານຈົ່ງເຂົ້າໄປຫາທ່ານພຣະອະນຸຣຸດທະຮອດບ່ອນຢູ່ ຂາບຕີນ ທ່ານດ້ວຍຂະໜ່ອມຕາມຄຳຂອງເຮົາແລ້ວຂາບຮຽນແນວນີ້ວ່າ "ພຣະຜູ້ເປັນເຈົ້າຜູ້ຈະເລີນ ຊ່າງໄມ້ປັນຈະກັງຄະຂາບຕີນທ່ານພຣະອະນຸຣຸດທະດ້ວຍຂະໜ່ອມ" ແລະຈົ່ງຂາບຮຽນແນວນີ້ວ່າ "ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂໍທ່ານພຣະອະນຸຣຸດທະໂຜດນັບຕົນເອງເປັນຮູບທີ່ ໔ ນິມົນຮັບພັດຕາຫານຂອງຊ່າງໄມ້ປັນຈະກັງຄະໃນມືອື່ນນີ້ ແລະ ຂໍພຣະຜູ້ເປັນເຈົ້າໂຜດມາແຕ່ເຊົ້າ ໆ ຍ້ອນຊ່າງໄມ້ປັນຈະກັງຄະມີກິດຫຼາຍ ມີໜ້າທີ່ທີ່ຈະຕ້ອງເຮັດທາງຣາດຊະການຫຼາຍ"

ຊາຍຄົນນັ້ນ ຮັບຄຳແລ້ວ ຈຶ່ງໄດ້ເຂົ້າໄປຫາທ່ານພຣະອະນຸຣຸດທະຮອດບ່ອນຢູ່ ຂາບແລ້ວນັ່ງໃນທີ່ສົມຄວນ ໄດ້ຂາບຮຽນທ່ານພຣະອະນຸຣຸດທະວ່າ "ພຣະຜູ້ເປັນເຈົ້າຜູ້ຈະເລີນ ຊ່າງໄມ້ປັນຈະກັງຄະຂາບຕີນພຣະຄຸນທ່ານດ້ວຍຂະໜ່ອມ ແລະ ຝາກຂາບຮຽນແນວນີ້ວ່າ "ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂໍທ່ານພຣະອະນຸຣຸດທະໂຜດນັບຕົນເອງເປັນຮູບທີ່ ໔ ນິມົນຮັບພັດຕາຫານຂອງຊ່າງໄມ້ປັນຈະກັງຄະໃນມືອື່ນນີ້ ແລະ ຂໍພຣະຜູ້ເປັນເຈົ້າໂຜດໄປແຕ່ເຊົ້າ ໆ ຍ້ອນຊ່າງໄມ້ປັນຈະກັງຄະມີກິດຫຼາຍ ມີໜ້າທີ່ທີ່ຈະຕ້ອງເຮັດທາງຣາດຊະການຫຼາຍດ້ວຍເທີ້ນ"

ເມື່ອແລ້ວ ທ່ານພຣະອະນຸຣຸດທະຮັບນິມົນໂດຍດຸດສະນີພາບ

[໔໙໐] ເມື່ອເວລາເຊົ້າ ເມື່ອຜ່ານຄືນນັ້ນໄປ ທ່ານພຣະອະນຸຣຸດທະ ຄອງຜ້າອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປສູ່ບ່ອນຢູ່ຂອງຊ່າງໄມ້ປັນຈະກັງຄະ ແລ້ວນັ່ງເທິງອາສະນະທີ່ປູລາດໄວ້ແລ້ວ ລຳດັບນັ້ນ ຊ່າງໄມ້ປັນຈະກັງຄະຖວາຍຂອງຫຍ້ຳຂອງສັນອັນປະນີດ ແກ່ທ່ານພຣະອະນຸຣຸດທະຈົນອີ່ມໜຳສຸກສະບາຍດ້ວຍຕົນເອງ ພໍເຫັນທ່ານພຣະອະນຸຣຸດທະສັນສຳເລັດລະມືອອກຈາກບາດແລ້ວ ຈຶ່ງເລືອກນັ່ງຢູ່ບ່ອນສົມຄວນບ່ອນໃດບ່ອນໜຶ່ງເຊິ່ງຕ່ຳກວ່າ ໄດ້ກ່າວກັບທ່ານພຣະອະນຸຣຸດທະວ່າ

"ພຣະຜູ້ເປັນເຈົ້າຜູ້ຈະເລີນ ພິກຂຸຜູ້ເຖຣະທັງຫຼາຍ ເຂົ້າມາຫາຂ້າພະເຈົ້າໃນບ່ອນນີ້ແລ້ວ ກ່າວແນວນີ້ວ່າ "ຄະຫະບໍດີ ທ່ານຈົ່ງຈະເລີນເຈໂຕວິມຸດຕິອັນຫາປະມານບໍ່ໄດ້ເທີ້ນ" ພຣະເຖຣະບາງຮູບກ່າວແນວນີ້ວ່າ "ຄະຫະບໍດີ ທ່ານຈົ່ງຈະເລີນເຈໂຕວິມຸດຕິທີ່ເປັນມະຫັກຄະຕະເທີ້ນ"

ພຣະຜູ້ເປັນເຈົ້າຜູ້ຈະເລີນ ທຳ ໒ ປະການນີ້ ຄື

໑. ເຈໂຕວິມຸດຕິອັນຫາປະມານບໍ່ໄດ້
໒. ເຈໂຕວິມຸດຕິທີ່ເປັນມະຫັກຄະຕະ

ມີອັດຖະຕ່າງກັນ ແລະ ມີພະຍັນຊະນະຕ່າງກັນ (ແນວໃດ) ຫຼື ວ່າ ມີອັດຖະເປັນອັນດຽວກັນ ຕ່າງກັນແຕ່ພະຍັນຊະນະທໍ່ນັ້ນ"

"ຄະຫະບໍດີ ຖ້າເຊັ່ນນັ້ນ ທ່ານນັ້ນແລ ຈົ່ງທຳຄວາມເຂົ້າໃຈໃນເລື້ອງນີ້ໃຫ້ແຈ້ງຊັດ ທ່ານຈະໄດ້ປະຕິບັດບໍ່ຜິດຈາກເລື້ອງນີ້"

"ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂ້າພະເຈົ້າມີຄວາມເຂົ້າໃຈແນວນີ້ວ່າ "ທຳເຫຼົ່ານີ້ ຄື

໑. ເຈໂຕວິມຸດຕິອັນຫາປະມານບໍ່ໄດ້
໒. ເຈໂຕວິມຸດຕິທີ່ເປັນມະຫັກຄະຕະ

ມີອັດຖະເປັນອັນດຽວກັນ ຕ່າງກັນແຕ່ພະຍັນຊະນະທໍ່ນັ້ນ"

"ຄະຫະບໍດີ ທຳ ໒ ປະການນີ້ ຄື

໑. ເຈໂຕວິມຸດຕິອັນຫາປະມານບໍ່ໄດ້
໒. ເຈໂຕວິມຸດຕິທີ່ເປັນມະຫັກຄະຕະ

ມີອັດຖະຕ່າງກັນແລະມີພະຍັນຊະນະຕ່າງກັນ ທ່ານເພິ່ງຮູ້ຄວາມຕ່າງກັນນັ້ນ ໂດຍວິທີທີ່ທຳເຫຼົ່ານີ້ ມີອັດຖະຕ່າງກັນ ແລະ ມີພະຍັນຊະນະຕ່າງກັນໂດຍເຫດຜົນຕໍ່ໄປນີ້

ເຈໂຕວິມຸດຕິອັນຫາປະມານບໍ່ໄດ້ ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ ມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ຢູ່ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນບ່ອນທຸກສະຖານ ດ້ວຍເມດຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ມີກະລຸນາຈິດ ຯລຯ ມີມຸທິຕາຈິດ ຯລຯ ມີອຸເປກຂາຈິດແຜ່

ໄປຕະຫຼອດທິດທີ ໑ ຢູ່ ໆລໆ ທິດທີ ໒ ໆລໆ ທິດທີ ໓ ໆລໆ ທິດທີ ໔ ໆລໆ ທິດເບື້ອງເທິງ ທິດເບື້ອງລ່າງ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນບ່ອນທຸກສະຖານ ດ້ວຍອຸເປກຂາຈິດ ອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ຄະຫະບໍດີ ນີ້ຮຽກວ່າ ເຈໂຕວິມຸດຕິອັນຫາປະມານບໍ່ໄດ້

[໔໓໑] ເຈໂຕວິມຸດຕິທີ່ເປັນມະຫັກຄະຕະ ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ ນ້ອມຈິດແຜ່ໄປຕະຫຼອດເຫງົ້າຕົ້ນໄມ້ ໑ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່

ນີ້ຮຽກວ່າ ເຈໂຕວິມຸດຕິທີ່ເປັນມະຫັກຄະຕະ

ພິກຂຸໃນພຣະທຳວິໄນນີ້ ນ້ອມຈິດແຜ່ໄປຕະຫຼອດເຫງົ້າຕົ້ນໄມ້ ໒ ຫຼື ໓ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່

ນີ້ຮຽກວ່າ ເຈໂຕວິມຸດຕິທີ່ເປັນມະຫັກຄະຕະ

ພິກຂຸໃນພຣະທຳວິໄນນີ້ ນ້ອມຈິດແຜ່ໄປຕະຫຼອດເຂດເຮືອນ ໑ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່

ນີ້ຮຽກວ່າ ເຈໂຕວິມຸດຕິທີ່ເປັນມະຫັກຄະຕະ

ພິກຂຸໃນພຣະທຳວິໄນນີ້ ນ້ອມຈິດແຜ່ໄປຕະຫຼອດເຂດເຮືອນ ໒ ຫຼື ໓ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່

ນີ້ຮຽກວ່າ ເຈໂຕວິມຸດຕິທີ່ເປັນມະຫັກຄະຕະ

ພິກຂຸໃນພຣະທຳວິໄນນີ້ ນ້ອມຈິດແຜ່ໄປຕະຫຼອດອານາຈັກ ໑ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່

ນີ້ຮຽກວ່າ ເຈໂຕວິມຸດຕິທີ່ເປັນມະຫັກຄະຕະ

ພິກຂຸໃນພຣະທຳວິໄນນີ້ ນ້ອມຈິດແຜ່ໄປຕະຫຼອດອານາຈັກ ໒ ຫຼື ໓ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່

ນີ້ຮຽກວ່າ ເຈໂຕວິມຸດຕິທີ່ເປັນມະຫັກຄະຕະ

ພິກຂຸໃນພຣະທຳວິໄນນີ້ ນ້ອມຈິດແຜ່ໄປຕະຫຼອດປະຖະພີ ເຊິ່ງມີມະຫາສະມຸດເປັນຂອບເຂດ ໑ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່

ນີ້ຮຽກວ່າ ເຈໂຕວິມຸດຕິທີ່ເປັນມະຫັກຄະຕະ

ຄະຫະບໍດີ ໂດຍເຫດພືນນີ້ ທ່ານກໍຈະຮູ້ຄວາມຕ່າງກັນນັ້ນ ໂດຍວິທີທີ່ທຳເຫຼົ່ານີ້ ມີອັດຖະຕ່າງກັນ ແລະ ມີພະຍັນຊະນະຕ່າງກັນ

[໔໓໔] ຄະຫະບໍດີ ການເຂົ້າເຖິງພົບນີ້ມີ ໔ ປະການ

ການເຂົ້າເຖິງພົບ ໔ ປະການ ອັນໃດແດ່

ຄື ບຸກຄົນລາງຄົນໃນໂລກນີ້

໑. ນ້ອມຈິດແຜ່ກະສິນມີແສງສະຫວ່າງເລັກໜ້ອຍເປັນອາລົມຢູ່ ຫຼັງຈາກຕາຍແລ້ວ ຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບຊັ້ນປະຣິດຕາພາ
໒. ນ້ອມຈິດແຜ່ກະສິນມີແສງສະຫວ່າງຫາປະມານບໍ່ໄດ້ເປັນອາລົມຢູ່ ຫຼັງຈາກຕາຍແລ້ວ ຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບຊັ້ນອັບປະມານາພາ
໓. ນ້ອມຈິດແຜ່ກະສິນມີແສງສະຫວ່າງເສົ້າໝອງເປັນອາລົມຢູ່ ຫຼັງຈາກຕາຍແລ້ວ ຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບຊັ້ນສັງກິລິດຖາພາ
໔. ນ້ອມຈິດແຜ່ກະສິນມີແສງສະຫວ່າງບໍລິສຸດເປັນອາລົມຢູ່ ຫຼັງຈາກຕາຍແລ້ວ ຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບຊັ້ນປະຣິສຸດທາພາ

ການເຂົ້າເຖິງພົບ ໔ ປະການນີ້ແລ

ມີສະໄໝທີ່ພວກເທບປະຊຸມຮ່ວມກັນ ເທບເຫຼົ່ານັ້ນ ຍ່ອມຜາກົດມີສີກາຍຕ່າງກັນ ແຕ່ມີຣັດສະໝີບໍ່ຕ່າງກັນ ປຽບຄື ບຸຣຸດເຍືອງໄຟນ້ຳມັນຫຼາຍດວງ ເຂົ້າໄປສູ່ເຮືອນຫຼັງໜຶ່ງ ປະທີບນ້ຳມັນເຫຼົ່ານັ້ນຜາກົດມີນ້ຳຕ່າງກັນ ແຕ່ມີແສງສະຫວ່າງບໍ່ຕ່າງກັນ

ແມ່ນສັນໃດ ສະໄໝທີ່ພວກເທບປະຊຸມຮ່ວມກັນ ກໍຄືກັນສັນນັ້ນ ເທບເຫຼົ່ານັ້ນຍ່ອມຜາກົດມີສີກາຍຕ່າງກັນ ແຕ່ມີຣັດສະໝີບໍ່ຕ່າງກັນ

ມີສະໄໝທີ່ພວກເທບແຍກກັນປະຊຸມ ເທບເຫຼົ່ານັ້ນ ຍ່ອມຜາກົດມີສີກາຍຕ່າງກັນແລະມີຣັດສະໝີຕ່າງກັນ ປຽບຄື ບຸຣຸດນຳປະທີບນ້ຳມັນຫຼາຍດວງອອກຈາກເຮືອນຫຼັງນັ້ນ ປະທີບນ້ຳມັນເຫຼົ່ານັ້ນຜາກົດມີນ້ຳຕ່າງກັນ ແລະ ມີແສງສະຫວ່າງຕ່າງກັນ ແມ່ນສັນໃດ ສະໄໝທີ່ພວກເທບ

ແຍກກັນປະຊຸມ ກໍຄືກັນສັນນັ້ນ ເທບເຫຼົ່ານັ້ນ ຍ່ອມຜາກົດມີສີກາຍຕ່າງກັນ ແລະ ມີຣັດສະໝີຕ່າງກັນ

ຄະຫະບໍດີ ເທບເຫຼົ່ານັ້ນ ບໍ່ມີຄວາມດໍາຣິແນວນີ້ເລີຍວ່າ "ສິ່ງນີ້ຂອງເຮົາທັງຫຼາຍທ່ຽງໝັ້ນຍືນ ຫຼື ແນ່ນອນ" ແຕ່ເທບເຫຼົ່ານັ້ນ ຍ່ອມອະພິຣົມໃນບ່ອນທີ່ຕົນອາໄສຢູ່ທີ່ນັ້ນ ປຽບຄື ແມງວັນທີ່ຕິດໄປກັບຫາບຫຼືກະຕາ ຍ່ອມບໍ່ມີຄວາມຄິດແນວນີ້ວ່າ "ຫາບຫຼືກະຕານີ້ຂອງເຮົາທ່ຽງ ໝັ້ນຍືນ ຫຼື ແນ່ນອນ" ແຕ່ວ່າແມງວັນເຫຼົ່ານັ້ນ ຍ່ອມອະພິຣົມໃນບ່ອນທີ່ຕົນອາໄສຢູ່ທີ່ນັ້ນ ແມ່ນສັນໃດ ເທບເຫຼົ່ານັ້ນ ກໍຄືກັນສັນນັ້ນ ບໍ່ມີຄວາມຄິດແນວນີ້ເລີຍວ່າ "ສິ່ງນີ້ຂອງເຮົາທັງຫຼາຍທ່ຽງໝັ້ນຍືນ ຫຼື ແນ່ນອນ" ແຕ່ເທບເຫຼົ່ານັ້ນ ຍ່ອມອະພິຣົມໃນບ່ອນທີ່ຕົນອາໄສຢູ່ທີ່ນັ້ນ"

[໔໑໑] ເມື່ອທ່ານພຣະອະນຸຣຸດທະກ່າວແນວນີ້ແລ້ວ ທ່ານພຣະສະພິຍະກັດຈານະ ໄດ້ກ່າວກັບທ່ານພຣະອະນຸຣຸດທະວ່າ "ດີແລ້ວ ທ່ານອະນຸຣຸດທະຜູ້ຈະເລີນ ແຕ່ຂ້າພະເຈົ້າມີເລື້ອງຈະຂໍຖາມໃຫ້ຍິ່ງຂຶ້ນໄປໃນເລື້ອງນີ້ວ່າ "ເທບຜູ້ມີຣັດສະໝີທັງໝົດນັ້ນມີຣັດສະໝີເລັກໜ້ອຍ ຫຼື ວ່າບັນດາເທບເຫຼົ່ານັ້ນ ມີເທບລາງພວກມີຣັດສະໝີຫາປະມານບໍ່ໄດ້"

ທ່ານພຣະອະນຸຣຸດທະກ່າວວ່າ "ທ່ານກັດຈານະ ໂດຍອີງແຫ່ງການເກີດ ບັນດາເທບເຫລົ່ານີ້ ເທບລາງພວກມີຣັດສະໝີເລັກໜ້ອຍ ແຕ່ເທບລາງພວກມີຣັດສະໝີຫາປະມານບໍ່ໄດ້"

"ທ່ານອະນຸຣຸດທະຜູ້ຈະເລີນ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ບັນດາເທບຜູ້ເກີດໃນໝູ່ເທບດຽວກັນເຫຼົ່ານັ້ນ ເທບລາງພວກມີຣັດສະໝີເລັກໜ້ອຍ ແຕ່ເທບລາງພວກມີຣັດສະໝີຫາປະມານບໍ່ໄດ້"

"ທ່ານກັດຈານະ ຖ້າເຊັ່ນນັ້ນ ຂ້າພະເຈົ້າຈະຍ້ອນຖາມທ່ານໃນເລື້ອງນີ້ ທ່ານເພິ່ງຕອບບັນຫານັ້ນຕາມທີ່ທ່ານພໍໃຈ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ?

ຄື ພິກຂຸອົງທີ່ນ້ອມຈິດແຜ່ໄປຕະຫຼອດເຫງົ້າຕົ້ນໄມ້ ໑ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່ ກັບພິກຂຸອົງທີ່ນ້ອົມຈິດແຜ່ໄປຕະຫຼອດເຫງົ້າຕົ້ນໄມ້ ໒ ຫຼື ໓ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່ ບັນດາຈິດຕະພາວະນາຂອງພິກຂຸ ໒ ອົງນີ້ ຈິດຕະພາວະນາແນວໃດ ເປັນມະຫັກຄະຕະຈິດຕະພາວະນາຍິ່ງກວ່າກັນ"

"ບັນດາຈິດຕະພາວະນາຂອງພິກຂຸ ໒ ອົງນີ້ ຈິດຕະພາວະນາຂອງພິກຂຸອົງທີ່ນ້ອມຈິດແຜ່ໄປສູ່ເຫງົ້າຕົ້ນໄມ້ ໒ ຫຼື ໓ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່ນີ້ ເປັນມະຫັກຄະຕະຈິດຕະພາວະນາຍິ່ງກວ່າ ຂ້ານ້ອຍ"

"ທ່ານກັດຈານະ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ?

ຄື ພິກຂຸອົງທີ່ນ້ອມຈິດແຜ່ໄປຕະຫຼອດເຫງົ້າຕົ້ນໄມ້ ໔ ຫຼື ໕ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່ ກັບພິກຂຸອົງທີ່ນ້ອມຈິດແຜ່ໄປຕະຫຼອດເຂດເຮືອນ ໑ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່ ບັນດາຈິດຕະພາວະນາຂອງພິກຂຸ ໔ ອົງນີ້ ຈິດຕະພາວະນາແນວໃດ ເປັນມະຫັກຄະຕະຈິດຕະພາວະນາຍິ່ງກວ່າກັນ"

"ບັນດາຈິດຕະພາວະນາຂອງພິກຂຸ ໔ ອົງນີ້ ຈິດຕະພາວະນາຂອງພິກຂຸອົງທີ່ນ້ອມຈິດແຜ່ໄປຕະຫຼອດເຂດເຮືອນ ໑ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່ນີ້ ເປັນມະຫັກຄະຕະຈິດຕະພາວະນາຍິ່ງກວ່າ ຂ້ານ້ອຍ"

"ທ່ານກັດຈານະ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ?

ຄື ພິກຂຸອົງທີ່ນ້ອມຈິດແຜ່ໄປຕະຫຼອດເຂດເຮືອນ ໑ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່ ກັບພິກຂຸອົງທີ່ນ້ອມຈິດແຜ່ໄປຕະຫຼອດເຂດເຮືອນ ໔ ຫຼື ໕ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່ ບັນດາຈິດຕະພາວະນາຂອງພິກຂຸ ໔ ອົງນີ້ ຈິດຕະພາວະນາແນວໃດ ເປັນມະຫັກຄະຕະຈິດຕະພາວະນາຍິ່ງກວ່າກັນ"

"ບັນດາຈິດຕະພາວະນາຂອງພິກຂຸ ໔ ອົງນີ້ ຈິດຕະພາວະນາຂອງພິກຂຸທີ່ນ້ອມຈິດແຜ່ໄປຕະຫຼອດເຂດເຮືອນ ໔ ຫຼື ໕ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່ນີ້ ເປັນມະຫັກຄະຕະຈິດຕະພາວະນາຍິ່ງກວ່າ ຂ້ານ້ອຍ"

"ທ່ານກັດຈານະ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ?

ຄື ພິກຂຸອົງທີ່ນ້ອມຈິດແຜ່ໄປຕະຫຼອດເຂດເຮືອນ ໔ ຫຼື ໕ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່ ກັບພິກຂຸອົງທີ່ນ້ອມຈິດແຜ່ໄປຕະຫຼອດມະຫາອານາຈັກ ໑ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່ ບັນດາຈິດຕະພາວະນາຂອງພິກຂຸ ໔ ອົງນີ້ ຈິດຕະພາວະນາແນວໃດ ເປັນມະຫັກຄະຕະຈິດຕະພາວະນາຍິ່ງກວ່າກັນ"

"ບັນດາຈິດຕະພາວະນາຂອງພິກຂຸ ໔ ອົງນີ້ ຈິດຕະພາວະນາຂອງພິກຂຸອົງທີ່ນ້ອມຈິດແຜ່ໄປຕະຫຼອດມະຫາອານາຈັກ ໑ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່ນີ້ ເປັນມະຫັກຄະຕະຈິດຕະ ພາວະນາຍິ່ງກວ່າ ຂ້ານ້ອຍ"

"ທ່ານກັດຈານະ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ

ຄື ພິກຂຸອົງທີ່ນ້ອມຈິດແຜ່ໄປຕະຫຼອດມະຫາອານາຈັກ ໑ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່ ກັບພິກຂຸອົງທີ່ນ້ອມຈິດແຜ່ໄປຕະຫຼອດມະຫາອານາຈັກ ໔ ຫຼື ໕ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່ ບັນດາຈິດຕະພາວະນາຂອງພິກຂຸ ໔ ອົງນີ້ ຈິດຕະພາວະນາແນວໃດ ເປັນມະ

ຫັກຄະຕະຈິດຕະພາວະນາຍິ່ງກວ່າກັນ"

"ບັນດາຈິດຕະພາວະນາຂອງພິກຂຸ ໔ ອົງນີ້ ຈິດຕະພາວະນາຂອງພິກຂຸອົງທີ່ນ້ອມຈິດແຜ່ໄປຕະຫຼອດມະຫາອານາຈັກ ໔ ຫຼື ໓ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່ນີ້ ເປັນມະຫັກຄະຕະຈິດຕະພາວະນາຍິ່ງກວ່າ ຂ້ານ້ອຍ"

"ທ່ານກັດຈານະ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ?

ຄື ພິກຂຸອົງທີ່ນ້ອມຈິດແຜ່ໄປຕະຫຼອດມະຫາອານາຈັກ ໔ ຫຼື ໓ ແຫ່ງວ່າ "ເປັນແດນມະຫັກຄະຕະ" ຢູ່ ກັບພິກຂຸອົງທີ່ນ້ອມຈິດແຜ່ໄປຕະຫຼອດມະຫາປະຖະພີມີມະຫາສະມຸດເປັນຂອບເຂດຢູ່ ບັນດາຈິດຕະພາວະນາຂອງພິກຂຸ ໔ ອົງນີ້ ຈິດຕະພາວະນາແນວໃດ ເປັນມະຫັກຄະຕະຈິດຕະພາວະນາຍິ່ງກວ່າກັນ"

"ບັນດາຈິດຕະພາວະນາຂອງພິກຂຸ ໔ ອົງນີ້ ຈິດຕະພາວະນາຂອງພິກຂຸອົງທີ່ນ້ອມຈິດແຜ່ໄປຕະຫຼອດມະຫາປະຖະພີມີມະຫາສະມຸດເປັນຂອບເຂດວ່າ "ເປັນແດນມະຫັກຄະຕະ" ຢູ່ນີ້ ເປັນມະຫັກຄະຕະຈິດຕະພາວະນາຍິ່ງກວ່າ ຂ້ານ້ອຍ"

"ທ່ານກັດຈານະ ນີ້ແລ ເປັນເຫດເປັນປັດໄຈໃຫ້ບັນດາເທບຜູ້ເກີດໃນໝູ່ເທບດຽວກັນເຫຼົ່ານັ້ນ ລາງພວກມີຣັດສະໝີເລັກໜ້ອຍ ແຕ່ລາງພວກມີຣັດສະໝີຫາປະມານບໍ່ໄດ້"

[໔໓໔] "ດີແລ້ວ ທ່ານອະນຸຣຸດທະຜູ້ຈະເລີນ ແຕ່ຂ້າພະເຈົ້າມີເລື້ອງຈະຂໍສອບຖາມໃຫ້ຍິ່ງຂື້ນໄປໃນເລື້ອງນີ້ວ່າ "ເທບຜູ້ມີຣັດສະໝີທັງໝົດນັ້ນ ມີຣັດສະໝີເສົ້າໝອງ ຫຼື ວ່າ ບັນດາເທບເຫຼົ່ານັ້ນມີເທບລາງພວກມີຣັດສະໝີບໍລິສຸດ"

"ທ່ານກັດຈານະ ໂດຍອົງແຫ່ງການເກີດນັ້ນ ບັນດາເທບເຫຼົ່ານີ້ ເທບລາງພວກມີຣັດສະໝີເສົ້າໝອງ ແຕ່ເທບລາງພວກມີຣັດສະໝີບໍລິສຸດ"

"ທ່ານອະນຸຣຸດທະຜູ້ຈະເລີນ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ບັນດາເທບຜູ້ເກີດໃນໝູ່ເທບດຽວກັນເຫຼົ່ານັ້ນ ເທບລາງພວກມີຣັດສະໝີເສົ້າໝອງ ແຕ່ເທບລາງພວກມີຣັດສະໝີບໍລິສຸດ"

"ທ່ານກັດຈານະ ຖ້າເຊັ່ນນັ້ນ ຂ້າພະເຈົ້າຈັກທຳການປຽບທຽບແກ່ທ່ານ ແມ່ນຍ້ອນການປຽບທຽບ ວິນຍູຊົນລາງພວກໃນໂລກນີ້ ຈຶ່ງຮູ້ທົ່ວເຖິງອັດຖະແຫ່ງພາສິດໄດ້

ປຽບຄື ເມື່ອປະທີບນ້ຳມັນອັນບຸກຄົນໄຟເຜົາຢູ່ ແມ່ນນ້ຳມັນກໍບໍ່ບໍລິສຸດ ແມ່ນໄສ້ກໍບໍ່ບໍລິສຸດ ຍ້ອນນ້ຳມັນແລະໄສ້ບໍ່ບໍລິສຸດ ປະທີບນ້ຳມັນນັ້ນ ຈຶ່ງຕິດໄຟແນວ ຣິບຣີ່ ແມ່ນສັນໃດ ພິກຂຸລາງອົງໃນພຣະທຳວິໄນນີ້ ກໍຄືກັນສັນນັ້ນ ນ້ອມຈິດ ແຜ່ກະສິນມີແສງສະຫວ່າງເສົ້າໝອງເປັນອາລົມຢູ່ ບໍ່ລະງັບຄວາມຊົ່ວຫຍາບທາງກາຍໃຫ້ດີ ບໍ່ຖອນຖີນະມິດທະໃຫ້ດີ ບໍ່ກຳຈັດອຸດທັດຈະ

ກຸກກຸດຈະໃຫ້ດີ ຍ້ອນບໍ່ລະງັບຄວາມຊົ່ວຫຍາບທາງກາຍໃຫ້ດີ ບໍ່ຖອນຖີນະມິດທະໃຫ້ດີ ບໍ່ກຳຈັດອຸດທັດຈະກຸກກຸດຈະໃຫ້ດີ ພິກຂຸນັ້ນຈຶ່ງຮຸ່ງເຮືອງແນວຮິບຮີ່ ຫຼັງຈາກມໍຣະນະພາບແລ້ວ ຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບໝູ່ເທບຜູ້ມີຣັດສະໝີເສົ້າໝອງ

ປຽບຄື ເມື່ອປະທີບນ້ຳມັນອັນບຸກຄົນໄຟເຜົາຢູ່ ແມ່ນນ້ຳມັນກໍບໍລິສຸດ ແມ່ນໄສ້ກໍບໍລິສຸດຍ້ອນນ້ຳມັນແລະໄສ້ບໍລິສຸດ ປະທີບນ້ຳມັນນັ້ນຈຶ່ງຕິດໄຟແນວບໍ່ຮິບຮີ່ ແມ່ນສັນໃດ ພິກຂຸລາງອົງໃນພຣະທຳວິໄນນີ້ ກໍຄືກັນສັນນັ້ນ ນ້ອມຈິດແຜ່ກະສິນ ມີແສງສະຫວ່າງບໍລິສຸດເປັນອາລົມຢູ່ລະງັບຄວາມຊົ່ວຫຍາບທາງກາຍໃຫ້ດີ ຖອນຖີນະມິດທະໃຫ້ດີ ກຳຈັດອຸດທັດຈະກຸກກຸດຈະໃຫ້ດີຍ້ອນລະງັບຄວາມຊົ່ວຫຍາບທາງກາຍໃຫ້ດີ ຖອນຖີນະມິດທະໃຫ້ດີ ແລະ ກຳຈັດອຸດທັດຈະກຸກກຸດຈະໃຫ້ດີ ພິກຂຸນັ້ນ ຈຶ່ງຮຸ່ງເຮືອງແນວບໍ່ຮິບຮີ່ ຫຼັງຈາກມໍຣະນະພາບແລ້ວ ຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບຜູ້ມີຣັດສະໝີບໍລິສຸດ

ທ່ານກັດຈານະ ນີ້ແລ ເປັນເຫດເປັນປັດໄຈໃຫ້ບັນດາເທບຜູ້ເກີດໃນໝູ່ເທບດຽວກັນເຫຼົ່ານັ້ນ ເທບລາງພວກມີຣັດສະໝີເສົ້າໝອງ ແຕ່ເທບລາງພວກມີຣັດສະໝີບໍລິສຸດ”

[໔໓໕] ເມື່ອທ່ານພຣະອະນຸຣຸດທະກ່າວແນວນີ້ແລ້ວ ທ່ານພຣະສະພິຍະກັດຈານະໄດ້ກ່າວກັບທ່ານພຣະອະນຸຣຸດທະວ່າ “ດີແລ້ວ ທ່ານອະນຸຣຸດທະຜູ້ຈະເລີນ ທ່ານອະນຸຣຸດທະບໍ່ໄດ້ກ່າວແນວນີ້ວ່າ “ເຮົາໄດ້ສະດັບມາແລ້ວແນວນີ້” ຫຼືວ່າ “ຄວນຈະເປັນແນວນີ້” ແຕ່ທ່ານອະນຸຣຸດທະກ່າວວ່າ “ເທບເຫຼົ່ານັ້ນເປັນແນວນັ້ນແດ່ ເທບເຫຼົ່ານັ້ນເປັນແນວນີ້ແດ່ ທ່ານຜູ້ຈະເລີນຂ້າພະເຈົ້ານັ້ນມີຄວາມຄິດແນວນີ້ວ່າ “ທ່ານອະນຸຣຸດທະຕ້ອງເຄີຍຢູ່ຮ່ວມ ເຄີຍເຈລະຈາ ແລະເຄີຍຮ່ວມສົນທະນາກັບເທບເຫຼົ່ານັ້ນມາແນ່ນອນ”

“ທ່ານກັດຈານະ ທ່ານກ່າວວາຈານີ້ເປັນທີ່ໜ້າເຊື່ອຖືຈິງ ໆ ແຕ່ຂ້າພະເຈົ້າຈັກຕອບທ່ານແດ່ ທ່ານກັດຈານະ ຂ້າພະເຈົ້າເຄີຍຢູ່ຮ່ວມ ເຄີຍເຈລະຈາ ແລະ ເຄີຍຮ່ວມສົນທະນາກັບເທບເຫຼົ່ານັ້ນມາດົນແລ້ວ”

ເມື່ອທ່ານພຣະອະນຸຣຸດທະກ່າວແນວນີ້ແລ້ວ ທ່ານພຣະສະພິຍະກັດຈານະໄດ້ກ່າວກັບຊ່າງໄມ້ປັນຈະກັງຄະວ່າ “ຄະຫະບໍດີ ເປັນລາບຂອງທ່ານ ທ່ານໄດ້ດີແລ້ວ ທີ່ທ່ານລະເຫດແຫ່ງຄວາມສົງໄສນັ້ນເສຍໄດ້ ເຮົາທັງສອງຈຶ່ງໄດ້ຟັງທຳບັນລະຍາຍນີ້” ດັ່ງນີ້ແລ

**ອະນຸຣຸດທະສູດທີ ໗ ຈົບ**

# ໗. ອຸປັກກິເລດສູດ

## ວ່າດ້ວຍອຸປະກິເລດ

[໔໓໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໂຄສິຕາຣາມ ເຂດນະຄອນໂກສຳພີ ສະໄໝນັ້ນແລ ພິກຂຸທັງຫຼາຍໃນນະຄອນໂກສຳພີ ເກີດຄວາມໝາງໃຈ ເກີດການຜິດກັນຜິດຖຽງ ຈົນວ່າໃຊ້ຫອກ ຄື ປາກສຽບແທງກັນຢູ່

ຄັ້ງນັ້ນ ພິກຂຸຮູບໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ ໃນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ພິກຂຸທັງຫຼາຍໃນນະຄອນໂກສຳພີ ເກີດຄວາມໝາງໃຈ ເກີດການຜິດກັນເກີດການຜິດຖຽງ ຈົນວ່າໃຊ້ຫອກຄືປາກສຽບແທງກັນຢູ່ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດອະນຸເຄາະສະເດັດໄປຫາພິກຂຸເຫຼົ່ານັ້ນດ້ວຍເທີ້ນ ຂ້ານ້ອຍ"

ເມື່ອແລ້ວ ພຣະຜູ້ມີພຣະພາກເຈົ້າ ຊົງຮັບອາຣາດທະນາໂດຍດຸດສະນີພາບ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ສະເດັດເຂົ້າໄປຫາພິກຂຸເຫຼົ່ານັ້ນຮອດບ່ອນຢູ່ ແລ້ວໄດ້ຕັດກັບພິກຂຸເຫຼົ່ານັ້ນວ່າ "ຢ່າເລີຍ ພິກຂຸທັງຫຼາຍ ທ່ານທັງຫຼາຍຢ່າໝາງໃຈກັນ ຢ່າຜິດກັນຢ່າຂັດແຍ່ງກັນ ຢ່າຖຽງກັນກັນເລີຍ"

ເມື່ອພຣະຜູ້ມີພຣະພາກເຈົ້າ ຕັດແນວນີ້ແລ້ວ ພິກຂຸຮູບໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນທຳສາມີ (ເຈົ້າຂອງທຳ) ໂຜດຖ້າກ່ອນ ຂໍພຣະຜູ້ມີພຣະພາກເຈົ້າຊົງຂົນຂວາຍນ້ອຍ ປະກອບຕາມສຸກວິຫານທຳໃນປັດຈຸບັນຢູ່ເທີ້ນ ຂ້າພຣະອົງທັງຫຼາຍຈະຜາກົດຍ້ອນຄວາມໝາງໃຈກັນ ການຜິດກັນ ການຂັດແຍ່ງ ແລະການຖຽງນັ້ນເອງ ຂ້ານ້ອຍ"

ແມ່ນເທື່ອທີ ໒ ພຣະຜູ້ມີພຣະພາກເຈົ້າກໍໄດ້ຕັດກັບພິກຂຸເຫຼົ່ານັ້ນວ່າ "ຢ່າເລີຍ ພິກຂຸທັງຫຼາຍ ທ່ານທັງຫຼາຍ ຢ່າໝາງໃຈກັນ ຢ່າຜິດກັນ ຢ່າຂັດແຍ່ງກັນ ຢ່າຖຽງກັນເລີຍ"

ພິກຂຸອົງນັ້ນ ໄດ້ຂາບທູນອີກເປັນຄັ້ງທີ່ ໒ ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນທຳສາມີ ໂຜດຄອຍກ່ອນ ຂໍພຣະຜູ້ມີພຣະພາກເຈົ້ າຊົງຂົນຂວາຍໜ້ອຍ

ປະກອບຕາມສຸກວິຫານທຳໃນປັດຈຸບັນຢູ່ເທີ້ນ ຂ້າພຣະອົງທັງຫຼາຍ ຈະຜາກົດຍ້ອນຄວາມໝາງ ໃຈກັນ ການຜິດກັນ ການຂັດແຍ່ງກັນ ແລະ ການຖຽງກັນນັ້ນເອງ ຂ້ານ້ອຍ"

ແມ່ນເທື່ອທີ ໓ ພຣະຜູ້ມີພຣະພາກເຈົ້າກໍໄດ້ຕັດກັບພິກຂຸເຫຼົ່ານັ້ນວ່າ "ຢ່າເລີຍ ພິກຂຸທັງຫຼາຍ ທ່ານທັງຫຼາຍ ຢ່າໝາງໃຈກັນ ຢ່າຜິດກັນ ຢ່າຂັດແຍ່ງກັນ ຢ່າຖຽງກັນກັນເລີຍ"

ພິກຂຸອົງນັ້ນ ກໍໄດ້ຂາບທູນອີກເປັນເທື່ອທີ ໓ ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກຜູ້ຊົງເປັນທຳສາມີ ໂຜດຖ້າກ່ອນ ຂໍພຣະພຣະຜູ້ມີພຣະພາກເຈົ້າ ຊົງຂົນຂວາຍໜ້ອຍປະກອບຕາມສຸກວິຫານທຳໃນປັດຈຸບັນຢູ່ເທີ້ນ ຂ້າພຣະອົງທັງຫຼາຍ ຈະຜາກົດຍ້ອນຄວາມໝາງ ໃຈກັນ ການຜິດກັນ ການຂັດແຍ່ງກັນ ແລະ ການຖຽງກັນນັ້ນເອງ ຂ້ານ້ອຍ"

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ສະເດັດເຂົ້າໄປບິນທະບາດໃນກຣຸງໂກສຳພີ ຊົງທ່ຽວບິນທະບາດໃນນະຄອນໂກສຳພີແລ້ວ ສະເດັດກັບຈາກບິນທະບາດ ພາຍຫຼັງສະເຫວີຍພຣະກະຍາຫານສຳເລັດແລ້ວ ຊົງຖືຮັກສາເສນາສະນະ ຖືບາດ ແລະ ຈີວອນປະທັບຢືນຢູ່ນັ້ນແລ ໄດ້ຕັດພຣະຄາຖາເຫຼົ່ານີ້ ວ່າ

[໔໓໗] "ພິກຂຸທັງຫຼາຍ ຕ່າງສົ່ງສຽງດັງພ້ອມກັນ
ທີ່ຈະຮູ້ສຶກວ່າຕົນເປັນພານນັ້ນ ບໍ່ມີເລີຍຈັກອົງດຽວ
ຍິ່ງເມື່ອສົງແຕກກັນ ກໍບໍ່ໄດ້ຄຳນຶງເຖິງເລື້ອງອື່ນ
ທ່ານທັງຫຼາຍຂາດສະຕິ ສະແດງຕົນວ່າເປັນບັນດິດ
ເທົ້າຄາຣົມເວົ້າໄດ້ຕາມທີ່ຕົນປາຖະໜາ
ຈະຍື່ນປາກເວົ້າກໍບໍ່ຮູ້ສຶກເຖິງການຜິດຖຽງ
ຊົນເຫຼົ່າໃດເຂົ້າໄປຜູກເວນວ່າ
"ຄົນນີ້ໄດ້ດ່າເຮົາ ໄດ້ຂ້າເຮົາ
ໄດ້ຊະນະເຮົາ ແລະ ໄດ້ລັກສິ່ງຂອງຂອງເຮົາໄປ"
ເວນຂອງຊົນເຫຼົ່ານັ້ນຍ່ອມບໍ່ສະງົບລະງັບ
ສ່ວນຊົນເຫຼົ່າໃດບໍ່ເຂົ້າໄປຜູກເວນວ່າ
"ຄົນນີ້ໄດ້ດ່າເຮົາ ໄດ້ຂ້າເຮົາ
ໄດ້ຊະນະເຮົາ ແລະ ໄດ້ລັກສິ່ງຂອງຂອງເຮົາໄປ"
ເວນຂອງຊົນເຫຼົ່ານັ້ນຍ່ອມສະງົບລະງັບ
ຍ້ອນວ່າໃນການໃດ ໆ ເວນທັງຫຼາຍໃນໂລກນີ້
ຍ່ອມບໍ່ສະງົບລະງັບດ້ວຍເວນເລີຍ
ແຕ່ເວນທັງຫຼາຍຍ່ອມສະງົບລະງັບດ້ວຍການບໍ່ຈອງເວນ

ນີ້ເປັນທຳເກົ່າ

ຊົນເຫຼົ່າອື່ນບໍ່ຮູ້ແຈ້ງວ່າ
"ພວກເຮົາກຳລັງຍ່ອຍຍັບຢູ່ບ່ອນນີ້"
ສ່ວນຊົນເຫຼົ່າໃດໃນໝູ່ນັ້ນ
ຮູ້ແຈ້ງຄວາມມຸ້ງຮ້າຍກັນຍ່ອມລະງັບ
ຍ້ອນການປະຕິບັດຂອງຊົນເຫຼົ່ານັ້ນ
ຊົນທັງຫຼາຍບັ່ນກະດູກຂ້າກັນ ລັກຊັບຄືງົວແລະມ້າ
ເວລາຊີງແວ່ນແຄວ້ນກັນ ກໍຍັງກັບມາຄົບຫາກັນໄດ້ອີກ
ເປັນຫຍັງແລ້ວທ່ານທັງຫຼາຍຈຶ່ງຄົບຫາກັນບໍ່ໄດ້ນໍ?

ຖ້າບຸກຄົນເພິ່ງໄດ້ສະຫາຍຜູ້ມີປັນຍາຖືຮັກສາຕົນທ່ຽວໄປນຳກັນໄດ້
ເປັນສາທຸວິຫາຣີ ເປັນນັກປາດ
ຄອບງຳອັນຕະລາຍທັງປວງໄດ້ແລ້ວ
ເພິ່ງມີໃຈແຊ່ມຊື່ນ ມີສະຕິ ທ່ຽວໄປກັບສະຫາຍນັ້ນເທີ້ນ

ຖ້າບຸກຄົນບໍ່ເພິ່ງໄດ້ສະຫາຍຜູ້ມີປັນຍາຖືຮັກສາຕົນ
ທ່ຽວໄປນຳກັນໄດ້ ເປັນສາທຸວິຫາຣີ ເປັນນັກປາດ
ກໍເພິ່ງປະພຶດຢູ່ຜູ້ດຽວເທີ້ນ
ເໝືອນພຣະຣາຊາຊົງລະຖິ້ມແຄວ້ນທີ່ຊົງຊະນະແລ້ວ
ຊົງປະພຶດຢູ່ຜູ້ດຽວ
ແລະເໝືອນຊ້າງມາຕັງຄະລະຖິ້ມຝູງຢູ່ໂຕດຽວໃນປ່າ ສັນນັ້ນ

ການທ່ຽວໄປຂອງບຸກຄົນຜູ້ດຽວເປັນຄວາມປະເສີດ
ຍ້ອນຄຸນເຄື່ອງຄວາມເປັນສະຫາຍບໍ່ມີໃນຄົນພານ
ອັນໜຶ່ງ ບຸກຄົນຄວນມີຄວາມຂົນຂວາຍໜ້ອຍ
ທ່ຽວໄປຜູ້ດຽວບໍ່ເພິ່ງທຳຄວາມຊົ່ວ
ເໝືອນຊ້າງມາຕັງຄະທ່ຽວໄປໂຕດຽວໃນປ່າ"[໑]

[໔໓໗] ພຣະຜູ້ມີພຣະພາກເຈົ້າ ປະທັບຢືນຕັດພຣະຄາຖາເຫຼົ່ານີ້ແລ້ວ ໄດ້ສະເດັດເຂົ້າໄປສູ່ເຮືອນພາລະກະໂລນະກາຣະຄາມ ສະໄໝນັ້ນ ທ່ານພຣະພະຄຸພັກຢູ່ບ້ານພາລະກະໂລນະກາຣະຄາມ ໄດ້ເຫັນພຣະຜູ້ມີພຣະພາກກຳລັງສະເດັດມາແຕ່ໄກ ຈຶ່ງໄດ້ຈັດສະຖານທີ່ປະທັບ ຕັ້ງນ້ຳລ້າງພຣະບາດໄວ້

ພຣະຜູ້ມີພຣະພາກເຈົ້າ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ຊົງລ້າງພຣະບາດ ຝ່າຍທ່ານພຣະພະຄຸຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວ ນັ່ງຢູ່ບ່ອນສົມຄວນ

ພຣະຜູ້ມີພຣະພາກເຈົ້າຕັດກັບທ່ານພຣະພະຄຸວ່າ "ພິກຂຸ ທ່ານຍັງສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ? ບໍ່ລຳບາກດ້ວຍບິນທະບາດບໍ?"

ທ່ານພຣະພະຄຸຂາບທູນວ່າ "ຂ້າພຣະອົງຍັງສະບາຍດີ ຍັງພໍເປັນຢູ່ໄດ້ ບໍ່ລຳບາກດ້ວຍບິນທະບາດເລີຍ ຂ້ານ້ອຍ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຊີ້ແຈ່ງໃຫ້ທ່ານພຣະພະຄຸເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຣອຍຣ່ຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ແລ້ວຊົງລຸກຈາກພຸດທະອາດ ສະເດັດໄປສູ່ປ່າປາຈີນະວັງສະທາຍະວັນ

ສະໄໝນັ້ນ ທ່ານພຣະອະນຸຣຸດທະ ທ່ານພຣະນັນທິຍະ ແລະ ທ່ານພຣະກິມພິລະ ພັກຢູ່ທີ່ປ່າປາຈີນະວັງສະທາຍະວັນ

ນາຍທາຍະບານ (ຜູ້ຖືຮັກສາປ່າ) ໄດ້ເຫັນພຣະຜູ້ມີພຣະພາກເຈົ້າສະເດັດມາແຕ່ໄກ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະສະມະນະ ທ່ານຢ່າເຂົ້າໄປໃນປ່ານີ້ເລີຍ ໃນປ່ານີ້ມີກຸນລະບຸດ ໓ ທ່ານ ເຊິ່ງເປັນຜູ້ມຸ້ງປະໂຫຍດຕົນຢູ່ ທ່ານຢ່າໄດ້ລົບກວນກຸນລະບຸດທັງ ໓ ນັ້ນເລີຍ"

ທ່ານພຣະອະນຸຣຸດທະໄດ້ຍິນແລ້ວ ຈຶ່ງໄດ້ບອກນາຍທາຍະບານວ່າ "ນາຍທາຍະບານ ທ່ານຢ່າໄດ້ຫ້າມພຣະຜູ້ມີພຣະພາກເຈົ້າເລີຍ ພຣະຜູ້ມີພຣະພາກເຈົ້າຜູ້ເປັນພຣະສາດສະດາຂອງເຮົາທັງຫຼາຍ ສະເດັດມາເຖິງແລ້ວ"

[໔໓໙] ຄັ້ງນັ້ນ ທ່ານພຣະອະນຸຣຸດທະໄດ້ເຂົ້າໄປຫາທ່ານພຣະນັນທິຍະ ແລະ ທ່ານພຣະກິມພິລະຮອດບ່ອນຢູ່ ແລ້ວໄດ້ບອກວ່າ "ຟ້າວໄປກັນເທີ້ນທ່ານ ຟ້າວໄປກັນເທີ້ນທ່ານ ພຣະຜູ້ມີພຣະພາກເຈົ້າ ຜູ້ເປັນພຣະສາດສະດາຂອງເຮົາທັງຫຼາຍສະເດັດມາເຖິງແລ້ວ"

ທ່ານພຣະອະນຸຣຸດທະ ທ່ານພຣະນັນທິຍະ ແລະ ທ່ານພຣະກິມພິລະໄດ້ຕ້ອນຮັບພຣະຜູ້ມີພຣະພາກເຈົ້າ ຄື ອົງໜຶ່ງ ຮັບບາດແລະຈີວອນຂອງພຣະຜູ້ມີພຣະພາກເຈົ້າ ອົງໜຶ່ງ ປູພຸດທະອາດ ອົງໜຶ່ງ ຕັ້ງນ້ຳລ້າງພຣະບາດ

ພຣະຜູ້ມີພຣະພາກເຈົ້າປະທັບນັ່ງ ພຸດທະອາດທີ່ປູລາດໄວ້ ຊົງລ້າງພຣະບາດແລ້ວ ພຣະເຖຣະທັງ ໓ ອົງນັ້ນ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວ ນັ່ງຢູ່ບ່ອນສົມຄວນ

ພຣະຜູ້ມີພຣະພາກເຈົ້າຕັດກັບທ່ານພຣະອະນຸຣຸດທະວ່າ "ອະນຸຣຸດທະ ນັນທິຍະແລະກິມພິລະ ທ່ານທັງຫຼາຍຍັງສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ? ບໍ່ລຳບາກດ້ວຍບິນທະບາດແມ່ນບໍ?"

“ຂ້າພຣະອົງທັງຫຼາຍ ຍັງສະບາຍດີ ຍັງພໍເປັນຢູ່ໄດ້ ບໍ່ລຳບາກດ້ວຍບິນທະບາດ ຂ້ານ້ອຍ”

“ທ່ານທັງຫຼາຍ ຍັງສາມັກຄີກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ເປັນເໝືອນນ້ຳນົມກັບນ້ຳ ເບິ່ງກັນດ້ວຍສາຍຕາທີ່ປ່ຽມດ້ວຍຄວາມຮັກຢູ່ບໍ?”

“ຂໍປະທານວະໂຣກາດ ຂ້າພຣະອົງທັງຫຼາຍຍັງສາມັກຄີກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ເປັນເໝືອນນ້ຳນົມກັບນ້ຳ ເບິ່ງກັນດ້ວຍສາຍຕາທີ່ປ່ຽມດ້ວຍຄວາມຮັກຢູ່ ຂ້ານ້ອຍ”

“ທ່ານທັງຫຼາຍ ເປັນຜູ້ສາມັກຄີກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ເປັນເໝືອນນ້ຳນົມກັບນ້ຳ ເບິ່ງກັນດ້ວຍສາຍຕາທີ່ປ່ຽມດ້ວຍຄວາມຮັກຢູ່ແນວໃດ?

“ຂໍປະທານວະໂຣກາດ ຂ້າພຣະອົງມີຄວາມຄິດແນວນີ້ວ່າ “ເປັນລາບຂອງເຮົານໍ ເຮົາໄດ້ດີແລ້ວນໍ ທີ່ໄດ້ຢູ່ກັບເພື່ອນພົມມະຈາຣີແນວນີ້” ຂ້າພຣະອົງຕັ້ງໝັ້ນກາຍຍະກຳອັນປະກອບດ້ວຍເມດຕາ ຕັ້ງໝັ້ນວະຈີກຳອັນປະກອບດ້ວຍເມດຕາ ແລະຕັ້ງໝັ້ນມະໂນກຳອັນປະກອບດ້ວຍເມດຕາໃນທ່ານເຫຼົ່ານີ້ ທັງຕໍ່ໜ້າແລະລັບຫຼັງ ຂ້າພຣະອົງມີຄວາມຄິດແນວນີ້ວ່າ “ທາງທີ່ດີ ເຮົາຄວນເກັບຄວາມນຶກຄິດຂອງຕົນແລ້ວປະພຶດຕາມອຳນາດຄວາມນຶກຄິດຂອງທ່ານເຫຼົ່ານີ້” ຂ້າພຣະອົງກໍເກັບຄວາມນຶກຄິດຂອງຕົນແລ້ວ ປະພຶດຕາມອຳນາດຄວາມນຶກຄິດຂອງທ່ານເຫຼົ່ານີ້ ກາຍຂອງຂ້າພຣະອົງທັງຫຼາຍຕ່າງກັນກໍຈິງ ແຕ່ຄວາມນຶກຄິດເບິ່ງຄືວ່າເປັນອັນດຽວກັນ ຂ້ານ້ອຍ”

ແມ່ນທ່ານພຣະນັນທິຍະ ໗ລ໗

ແມ່ນທ່ານກິມະພິລະກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນຂ້າພຣະອົງກໍມີຄວາມຄິດແນວນີ້ວ່າ “ເປັນລາບຂອງເຮົານໍ ເຮົາໄດ້ດີແລ້ວນໍ ທີ່ໄດ້ຢູ່ກັບເພື່ອນພົມມະຈາຣີແນວນີ້” ຂ້າພຣະອົງ ຕັ້ງໝັ້ນກາຍຍະກຳອັນປະກອບດ້ວຍເມດຕາ ຕັ້ງໝັ້ນວະຈີກຳອັນປະກອບດ້ວຍເມດຕາ ແລະ ຕັ້ງໝັ້ນມະໂນກຳອັນປະກອບດ້ວຍເມດຕາ ໃນທ່ານເຫຼົ່ານີ້ ທັງຕໍ່ໜ້າແລະລັບຫຼັງ ຂ້າພຣະອົງມີຄວາມຄິດແນວນີ້ວ່າ “ທາງທີ່ດີ ເຮົາຄວນເກັບຄວາມນຶກຄິດຂອງຕົນແລ້ວປະພຶດຕາມອຳນາດຄວາມນຶກຄິດຂອງທ່ານເຫຼົ່ານີ້” ຂ້າພຣະອົງກໍເກັບຄວາມນຶກຄິດຂອງຕົນແລ້ວປະພຶດຕາມອຳນາດຄວາມນຶກຄິດຂອງທ່ານເຫຼົ່ານີ້ ກາຍຂອງຂ້າພຣະອົງທັງຫຼາຍຕ່າງກັນກໍຈິງ ແຕ່ຄວາມນຶກຄິດເບິ່ງຄືວ່າເປັນອັນດຽວກັນ

ຂ້າພຣະອົງທັງຫຼາຍ ຍັງສາມັກຄີກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ເປັນເໝືອນນ້ຳນົມກັບນ້ຳ ເບິ່ງກັນດ້ວຍສາຍຕາທີ່ປ່ຽມດ້ວຍຄວາມຮັກຢູ່ແນວນີ້ແລ ຂ້ານ້ອຍ”

[໔໔໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ “ດີແລ້ວ ດີແລ້ວ ອະນຸຣຸດທະ ນັນທິຍະ ແລະກິມພິລະ ອັນໜຶ່ງ ທ່ານທັງຫຼາຍບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ແມ່ນບໍ?”

"ຂໍປະທານອະໄຣກາດ ຂ້າພຣະອົງທັງຫຼາຍບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ຂ້ານ້ອຍ"

"ທ່ານທັງຫຼາຍ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ແນວໃດ?"

"ຂໍປະທານອະໄຣກາດ ບັນດາຂ້າພຣະອົງທັງຫຼາຍ ອົງໃດກັບຈາກບິນທະບາດຈາກເຮືອນກ່ອນ ຮູບນັ້ນ ຍ່ອມປູລາດອາສະນະ ຕັ້ງນ້ຳສັນນ້ຳໃຊ້ໄວ້ ຕັ້ງຖາດຊຸດໄວ້ ອົງໃດກັບຈາກບິນທະບາດຈາກເຮືອນໃນພາຍຫຼັງ ຖ້າມີບິນທະບາດທີ່ເຫຼືອຈາກສັນ ຫາກປະສົງກໍສັນ ຫາກບໍ່ປະສົງກໍຖອກຖິ້ມເທິງພື້ນທີ່ທີ່ປາສະຈາກຂອງຂຽວ ຫຼື ຖອກລົງໃນນ້ຳທີ່ບໍ່ມີໂຕສັດ ອົງນັ້ນຖືຮັກສາອາສະນະ ເກັບນ້ຳສັນນ້ຳໃຊ້ ລ້າງຖາດຊຸດເກັບໄວ້ ປັດກວດໂຮງອາຫານ ອົງໃດເຫັນໝໍ້ນ້ຳສັນ ໝໍ້ນ້ຳໃຊ້ ຫຼື ໝໍ້ນ້ຳຊຳຣະວ່າງເປົ່າ ອົງນັ້ນກໍນຳໄປຕັ້ງໄວ້ ຖ້າເຫຼືອວິໄສຂອງທ່ານ ຂ້າພຣະອົງທັງຫຼາຍຈະກວັກມືຮຽກອົງທີ່ ໒ ມາຊ່ອຍກັນຍົກໝໍ້ນ້ຳສັນ ຫຼືໝໍ້ນ້ຳໃຊ້ໄປຕັ້ງໄວ້ ຂ້າພຣະອົງທັງຫຼາຍບໍ່ປະຣິປາກຈົ່ມຍ້ອນເລື້ອງນັ້ນເປັນປັດໄຈ ແລະຂ້າພຣະອົງທັງຫຼາຍນັ່ງສົນທະນາທຳມີກະຖາຕະຫຼອດຄືນຮອດຮຸ່ງ ຂ້າພຣະອົງທັງຫຼາຍບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ແນວນີ້ແລ ຂ້ານ້ອຍ"

[໔໔໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ອະນຸຣຸດທະ ນັນທິຍະ ແລະກິມພິລະ ເມື່ອທ່ານທັງຫຼາຍບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ແນວນີ້ ຍານທັດສະໃນທີ່ປະເສີດ ອັນສາມາດວິເສດຍິ່ງກວ່າທຳຂອງມະນຸດ ເຊິ່ງເປັນເຄື່ອງຢູ່ຢ່າງຜາສຸກ ທີ່ທ່ານທັງຫຼາຍໄດ້ບັນລຸແລ້ວມີຢູ່ບໍ?"

ທ່ານພຣະອະນຸຣຸດທະ ທ່ານພຣະນັນທິຍະ ແລະ ທ່ານພຣະກິມພິລະ ຂາບທູນວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໄຣກາດ ຂ້າພຣະອົງທັງຫຼາຍບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ຈຶ່ງຈື່ແສງສະຫວ່າງແລະການເຫັນຮູບໄດ້ ແຕ່ບໍ່ດົນເລີຍ ແສງສະຫວ່າງແລະການເຫັນຮູບນັ້ນກໍຫາຍໄປຈາກຂ້າພຣະອົງທັງຫຼາຍ ຂ້າພຣະອົງທັງຫຼາຍຈຶ່ງແທງຕະຫຼອດນິມິດນັ້ນບໍ່ໄດ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອະນຸຣຸດທະ ນັນທິຍະ ແລະ ກິມພິລະ ທ່ານທັງຫຼາຍຕ້ອງແທງຕະຫຼອດນິມິດນັ້ນໄດ້ແນ່ ຈະເລົ່າໃຫ້ຟັງວ່າ ກ່ອນແຕ່ການຕັດສະຣູ້

໑. ແມ່ນເຮົາຍັງບໍ່ຮູ້ດ້ວຍປັນຍາອັນຍິ່ງເອງ ຂະນະທີ່ຍັງເປັນໂພທິສັດຢູ່ ຍ່ອມຈື່ແສງສະຫວ່າງ ແລະ ການເຫັນຮູບໄດ້ຄືກັນ ແຕ່ບໍ່ດົນ ແສງສະຫວ່າງ ແລະ ການເຫັນຮູບນັ້ນກໍຫາຍໄປຈາກເຮົາ ເຮົາຈຶ່ງຄິດແນວນີ້ວ່າ "ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ແສງສະຫວ່າງແລະການເຫັນຮູບຫາຍໄປຈາກເຮົາ" ເຮົານັ້ນໄດ້ຄິດວ່າ "ວິຈິກິດສາເກີດຂຶ້ນແລ້ວແກ່ເຮົາ ຍ້ອນວິຈິກິດສາ

ເປັນເຫດ ສະມາທິຂອງເຮົາຈຶ່ງເຄື່ອນ ເມື່ອສະມາທິເຄື່ອນແລ້ວ ແສງສະຫວ່າງແລະການເຫັນຮູບຈຶ່ງຫາຍໄປ ເຮົາຈັກເຮັດໂດຍວິທີທີ່ວິຈິກິດສາຈະບໍ່ເກີດແກ່ເຮົາອີກ"

໔. ເຮົານັ້ນ ເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ຈຶ່ງຈື່ແສງສະຫວ່າງແລະການເຫັນຮູບໄດ້ ແຕ່ບໍ່ດົນ ແສງສະຫວ່າງແລະການເຫັນຮູບນັ້ນກໍຫາຍໄປຈາກເຮົາ ເຮົາຈຶ່ງຄິດວ່າ "ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ແສງສະຫວ່າງ ແລະ ການເຫັນຮູບຫາຍໄປຈາກເຮົາ" ເຮົານັ້ນໄດ້ຄິດວ່າ "ອະມະນະສິການ (ການບໍ່ໃສ່ໃຈ) ເກີດຂຶ້ນແລ້ວແກ່ເຮົາ ຍ້ອນອະມະນະສິການເປັນເຫດ ສະມາທິຂອງເຮົາຈຶ່ງເຄື່ອນ ເມື່ອສະມາທິເຄື່ອນແລ້ວ ແສງສະຫວ່າງແລະການເຫັນຮູບຈຶ່ງຫາຍໄປ ເຮົາຈັກເຮັດໂດຍວິທີທີ່ວິຈິກິດສາ ແລະ ອະມະນະສິການຈະບໍ່ເກີດແກ່ເຮົາອີກ"

໓. ເຮົານັ້ນ ເປັນຜູ້ບໍ່ຜະໝາດ ຯລຯ ເຮົານັ້ນໄດ້ຄິດວ່າ "ຖີນະມິດທະເກີດຂຶ້ນແລ້ວແກ່ເຮົາ ຍ້ອນຖີນະມິດທະເປັນເຫດ ສະມາທິຂອງເຮົາຈຶ່ງເຄື່ອນ ເມື່ອສະມາທິເຄື່ອນແລ້ວ ແສງສະຫວ່າງແລະການເຫັນຮູບຈຶ່ງຫາຍໄປ ເຮົາຈັກເຮັດໂດຍວິທີທີ່ວິຈິກິດສາ ອະມະນະສິການແລະຖີນະມິດທະຈະບໍ່ເກີດແກ່ເຮົາອີກ"

໔. ເຮົານັ້ນ ເປັນຜູ້ບໍ່ຜະໝາດ ຯລຯ ເຮົານັ້ນໄດ້ຄິດວ່າ "ຄວາມສະດຸ້ງຢ້ານເກີດຂຶ້ນແລ້ວແກ່ເຮົາ ຍ້ອນຄວາມສະດຸ້ງຢ້ານເປັນເຫດ ສະມາທິຂອງເຮົາຈຶ່ງເຄື່ອນ ເມື່ອສະມາທິເຄື່ອນແລ້ວແສງສະຫວ່າງ ແລະ ການເຫັນຮູບຈຶ່ງຫາຍໄປ

ປຽບຄື ບຸຣຸດຜູ້ເດີນທາງໄກ ທີ່ສອງຂ້າງທາງເກີດມີຄົນປອງຮ້າຍເຂົາ ຍ້ອນຖືກຄົນປອງຮ້າຍນັ້ນເປັນເຫດ ເຂົາຈຶ່ງເກີດຄວາມສະດຸ້ງຢ້ານ ແມ່ນສັນໃດ ຄວາມສະດຸ້ງຢ້ານເກີດຂຶ້ນແລ້ວແກ່ເຮົາ ຄືກັນສັນນັ້ນ ຍ້ອນຄວາມສະດຸ້ງຢ້ານເປັນເຫດ ສະມາທິຂອງເຮົາຈຶ່ງເຄື່ອນ ເມື່ອສະມາທິເຄື່ອນແລ້ວ ແສງສະຫວ່າງແລະການເຫັນຮູບຈຶ່ງຫາຍໄປ ເຮົາຈັກເຮັດໂດຍວິທີທີ່ວິຈິກິດສາອະມະນະສິການ ຖີນະມິດທະ ແລະ ຄວາມສະດຸ້ງຢ້ານຈະບໍ່ເກີດແກ່ເຮົາອີກ"

໕. ເຮົານັ້ນ ເປັນຜູ້ບໍ່ຜະໝາດ ຯລຯ ເຮົານັ້ນໄດ້ຄິດວ່າ "ຄວາມຍິນດີເກີດຂຶ້ນແລ້ວແກ່ເຮົາ ຍ້ອນຄວາມຍິນດີເປັນເຫດ ສະມາທິຂອງເຮົາຈຶ່ງເຄື່ອນ ເມື່ອສະມາທິເຄື່ອນແລ້ວ ແສງສະຫວ່າງ ແລະ ການເຫັນຮູບຈຶ່ງຫາຍໄປ"

ປຽບຄື ບຸຣຸດຜູ້ສະແຫວງຫາຂຸມຊັບແຫ່ງໜຶ່ງ ພົບແຫຼ່ງຂຸມຊັບ ໕ ແຫ່ງໃນເວລາດຽວກັນ ຍ້ອນພົບແຫຼ່ງຂຸມຊັບ ໕ ແຫ່ງນັ້ນເປັນເຫດ ເຂົາຈຶ່ງເກີດຄວາມຍິນດີ ແມ່ນສັນໃດ ຄວາມຍິນດີເກີດຂຶ້ນແລ້ວແກ່ເຮົາ ຄືກັນສັນນັ້ນ ຍ້ອນຄວາມຍິນດີເປັນເຫດ ສະມາທິຂອງເຮົາຈຶ່ງເຄື່ອນ ເມື່ອສະມາທິເຄື່ອນແລ້ວ ແສງສະຫວ່າງແລະການເຫັນຮູບຈຶ່ງຫາຍໄປ ເຮົາຈັກເຮັດໂດຍວິທີທີ່ວິຈິກິ

ດສາ ອະມະນະສິການ ຖີນະມິດທະ ຄວາມສະດຸ້ງຢ້ານ ແລະ ຄວາມຍິນດີຈະບໍ່ເກີດຂຶ້ນແກ່ເຮົາອີກ"

໖. ເຮົານັ້ນ ເປັນຜູ້ບໍ່ຜະໝາດ ຯລຯ ເຮົານັ້ນໄດ້ຄິດວ່າ "ຄວາມຊົ່ວຫຍາບເກີດຂຶ້ນແລ້ວແກ່ເຮົາ ຍ້ອນຄວາມຊົ່ວຫຍາບເປັນເຫດ ສະມາທິຂອງເຮົາຈຶ່ງເຄື່ອນ ເມື່ອສະມາທິເຄື່ອນແລ້ວ ແສງສະຫວ່າງແລະການເຫັນຮູບຈຶ່ງຫາຍໄປ ເຮົາຈັກເຮັດໂດຍວິທີທີ່ວິຈິກິດສາ ອະມະນະສິການ ຖີນະມິດທະ ຄວາມສະດຸ້ງຢ້ານ ຄວາມຍິນດີ ແລະ ຄວາມຊົ່ວຫຍາບຈະບໍ່ເກີດຂຶ້ນແກ່ເຮົາອີກ"

໗. ເຮົານັ້ນ ເປັນຜູ້ບໍ່ຜະໝາດ ຯລຯ ເຮົານັ້ນໄດ້ຄິດວ່າ "ຄວາມພຽນທີ່ພ່ຳເພັງເກີນໄປເກີດຂຶ້ນແລ້ວແກ່ເຮົາ ຍ້ອນຄວາມພຽນທີ່ພ່ຳເພັງເກີນໄປເປັນເຫດ ສະມາທິຂອງເຮົາຈຶ່ງເຄື່ອນ ເມື່ອສະມາທິເຄື່ອນແລ້ວ ແສງສະຫວ່າງແລະການເຫັນຮູບຈຶ່ງຫາຍໄປ

ປຽບຄື ບຸຣຸດເອົາມືທັງສອງ ຈັບນົກຄຸ່ມໄວ້ແໜ້ນ ນົກຄຸ່ມນັ້ນຕ້ອງເຖິງຄວາມຕາຍໃນມືຂອງບຸຣຸດນັ້ນນັ້ນເອງ ແມ່ນສັນໃດ ຄວາມພຽນທີ່ພ່ຳເພັງເກີນໄປ ໄດ້ເກີດຂຶ້ນແລ້ວແກ່ເຮົາ ຄືກັນສັນນັ້ນ ຍ້ອນຄວາມພຽນທີ່ພ່ຳເພັງເກີນໄປເປັນເຫດ ສະມາທິຂອງເຮົາຈຶ່ງເຄື່ອນ ເມື່ອສະມາທິເຄື່ອນແລ້ວ ແສງສະຫວ່າງແລະການເຫັນຮູບຈຶ່ງຫາຍໄປ ເຮົາຈັກເຮັດໂດຍວິທີທີ່ວິຈິກິດສາ ອະມະນະສິການ ຖີນະມິດທະ ຄວາມສະດຸ້ງຢ້ານ ຄວາມຍິນດີ ຄວາມຊົ່ວຫຍາບ ແລະຄວາມພຽນທີ່ພ່ຳເພັງເກີນໄປຈະບໍ່ເກີດຂຶ້ນແກ່ເຮົາອີກ"

໘. ເຮົານັ້ນ ເປັນຜູ້ບໍ່ຜະໝາດ ຯລຯ ເຮົານັ້ນ ໄດ້ຄິດວ່າ "ຄວາມພຽນທີ່ຢ່ອນເກີນໄປໄດ້ເກີດຂຶ້ນແລ້ວແກ່ເຮົາ ຍ້ອນຄວາມພຽນທີ່ຢ່ອນເກີນໄປເປັນເຫດ ສະມາທິຂອງເຮົາຈຶ່ງເຄື່ອນ ເມື່ອສະມາທິເຄື່ອນແລ້ວ ແສງສະຫວ່າງແລະການເຫັນຮູບຈຶ່ງຫາຍໄປ

ປຽບຄື ບຸຣຸດເອົາມືທັງສອງ ຈັບນົກຄຸ່ມຫຼວມ ໆ ນົກຄຸ່ມນັ້ນ ຍ່ອມບິນໄປຈາກມືເຂົາໄດ້ ແມ່ນສັນໃດ ຄວາມພຽນທີ່ຢ່ອນເກີນໄປໄດ້ເກີດຂຶ້ນແລ້ວແກ່ເຮົາ ຄືກັນສັນນັ້ນ ຍ້ອນຄວາມພຽນທີ່ຢ່ອນເກີນໄປເປັນເຫດ ສະມາທິຂອງເຮົາຈຶ່ງເຄື່ອນ ເມື່ອສະມາທິເຄື່ອນແລ້ວ ແສງສະຫວ່າງແລະການເຫັນຮູບຈຶ່ງຫາຍໄປ ເຮົາຈັກເຮັດໂດຍວິທີທີ່ວິຈິກິດສາ ອະມະນະສິການ ຖີນະມິດທະຄວາມສະດຸ້ງຢ້ານ ຄວາມຍິນດີ ຄວາມຊົ່ວຫຍາບ ຄວາມພຽນທີ່ພ່ຳເພັງເກີນໄປ ແລະ ຄວາມພຽນທີ່ຢ່ອນເກີນໄປຈະບໍ່ເກີດຂຶ້ນແກ່ເຮົາອີກ"

໙. ເຮົານັ້ນ ເປັນຜູ້ບໍ່ຜະໝາດ ຯລຯ ເຮົານັ້ນໄດ້ຄິດວ່າ "ຕັນຫາທີ່ຖ້າຊຶມໃສ່ໄດ້ເກີດຂຶ້ນແລ້ວແກ່ເຮົາ ຍ້ອນຕັນຫາທີ່ຖ້າຊຶມໃສ່ເປັນເຫດ ສະມາທິຂອງເຮົາຈຶ່ງເຄື່ອນ ເມື່ອສະມາທິເຄື່ອນແລ້ວ ແສງສະຫວ່າງແລະການເຫັນຮູບຈຶ່ງຫາຍໄປ ເຮົາຈັກເຮັດໂດຍວິທີທີ່ວິຈິກິດສາ ອະມະນະສິການ ຖີນະມິດທະ ຄວາມສະດຸ້ງຢ້ານ ຄວາມຍິນດີ ຄວາມຊົ່ວຫຍາບ ຄວາມພຽນທີ່ພ່ຳເພັງ

ເກີນໄປ ຄວາມພຽນທີ່ຍ່ອນເກີນໄປ ແລະຕັນຫາທີ່ຖ້າຊຶມໃສ່ຈະບໍ່ເກີດຂຶ້ນແກ່ເຮົາອີກ”

໑໐. ເຮົານັ້ນ ເປັນຜູ້ບໍ່ພະໝາດ ໆລໆ ເຮົານັ້ນໄດ້ຄິດວ່າ “ນານັດຕະສັນຍາໄດ້ເກີດຂຶ້ນແລ້ວແກ່ເຮົາ ຍ້ອນນານັດຕະສັນຍາເປັນເຫດ ສະມາທິຂອງເຮົາຈຶ່ງເຄື່ອນ ເມື່ອສະມາທິເຄື່ອນແລ້ວ ແສງສະຫວ່າງແລະການເຫັນຮູບຈຶ່ງຫາຍໄປ ເຮົາຈັກເຮັດໂດຍວິທີທີ່ວິຈິກິດສາ ອະມະນະສິການ ຖີນະມິດທະ ຄວາມສະດຸ້ງຢ້ານ ຄວາມຍິນດີ ຄວາມຊົ່ວຫຍາບ ຄວາມພຽນທີ່ພ່ຳເພັງເກີນໄປ ຄວາມພຽນທີ່ຍ່ອນເກີນໄປ ຕັນຫາທີ່ຖ້າກະຊິບ ແລະ ນານັດຕະສັນຍາຈະບໍ່ເກີດຂຶ້ນແກ່ເຮົາອີກ”

໑໑. ເຮົານັ້ນ ເປັນຜູ້ບໍ່ພະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ຈຶ່ງຈືແສງສະຫວ່າງແລະການເຫັນຮູບໄດ້ ແຕ່ບໍ່ດົນເລີຍ ແສງສະຫວ່າງແລະການເຫັນຮູບນັ້ນ ກໍຫາຍໄປຈາກເຮົາ ເຮົາຈຶ່ງຄິດວ່າ “ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ແສງສະຫວ່າງແລະການເຫັນຮູບຫາຍໄປຈາກເຮົາ” ເຮົານັ້ນໄດ້ຄິດວ່າ “ລັກສະນະທີ່ເພ່ງຮູບຫຼາຍເກີນໄປໄດ້ເກີດຂຶ້ນແລ້ວແກ່ເຮົາ ຍ້ອນລັກສະນະທີ່ເພ່ງຮູບຫຼາຍເກີນໄປເປັນເຫດ ສະມາທິຂອງເຮົາຈຶ່ງເຄື່ອນ ເມື່ອສະມາທິເຄື່ອນແລ້ວ ແສງສະຫວ່າງແລະການເຫັນຮູບຈຶ່ງຫາຍໄປ ເຮົາຈັກເຮັດໂດຍວິທີທີ່ວິຈິກິດສາ ອະມະນະສິການ ຖີນະມິດທະ ຄວາມສະດຸ້ງຢ້ານ ຄວາມຍິນດີ ຄວາມຊົ່ວຫຍາບ ຄວາມພຽນທີ່ພ່ຳເພັງເກີນໄປ ຄວາມພຽນທີ່ຍ່ອນເກີນໄປ ຕັນຫາທີ່ຖ້າກະຊິບ ນານັດຕະສັນຍາ ແລະ ລັກສະນະທີ່ເພ່ງຮູບຫຼາຍເກີນໄປຈະບໍ່ເກີດຂຶ້ນແກ່ເຮົາອີກ”

## ທຳເປັນເຄື່ອງເສົ້າໝອງແຫ່ງຈິດ

[໒໔໒] ເຮົານັ້ນຮູ້ແຈ້ງດັ່ງນີ້ວ່າ “ວິຈິກິດສາເປັນອຸປະກິເລດ (ທຳເຄື່ອງເສົ້າໝອງ) ແຫ່ງຈິດ” ແລ້ວ ຈຶ່ງລະວິຈິກິດສາອັນເປັນອຸປະກິເລດແຫ່ງຈິດໄດ້

ຮູ້ແຈ້ງດັ່ງນີ້ວ່າ “ອະມະນະສິການເປັນອຸປະກິເລດແຫ່ງຈິດ” ແລ້ວ ຈຶ່ງລະອະມະນະສິການອັນເປັນອຸປະກິເລດແຫ່ງຈິດໄດ້

ຮູ້ແຈ້ງດັ່ງນີ້ວ່າ “ຖີນະມິດທະເປັນອຸປະກິເລດແຫ່ງຈິດ” ແລ້ວ ຈຶ່ງລະຖີນະມິດທະອັນເປັນອຸປະກິເລດແຫ່ງຈິດໄດ້

ຮູ້ແຈ້ງດັ່ງນີ້ວ່າ “ຄວາມສະດຸ້ງຢ້ານເປັນອຸປະກິເລດແຫ່ງຈິດ” ແລ້ວ ຈຶ່ງລະຄວາມສະດຸ້ງຢ້ານອັນເປັນອຸປະກິເລດແຫ່ງຈິດໄດ້

ຮູ້ແຈ້ງດັ່ງນີ້ວ່າ “ຄວາມຍິນດີໃຈເປັນອຸປະກິເລດແຫ່ງຈິດ” ແລ້ວ ຈຶ່ງລະຄວາມຍິນດີໃຈອັນເປັນອຸປະກິເລດແຫ່ງຈິດໄດ້

ຮູ້ແຈ້ງດັ່ງນີ້ວ່າ “ຄວາມຊົ່ວຫຍາບເປັນອຸປະກິເລດແຫ່ງຈິດ” ແລ້ວ ຈຶ່ງລະຄວາມຊົ່ວຫຍາບອັນເປັນອຸປະກິເລດແຫ່ງຈິດໄດ້

ຮູ້ແຈ້ງດັ່ງນີ້ວ່າ “ຄວາມພຽນທີ່ພ່ຳເພັງເກີນໄປເປັນອຸປະກິເລດແຫ່ງຈິດ” ແລ້ວ ຈຶ່ງລະຄວາມພຽນທີ່ພ່ຳເພັງເກີນໄປອັນເປັນອຸປະກິເລດແຫ່ງຈິດໄດ້

ຮູ້ແຈ້ງດັ່ງນີ້ວ່າ “ຄວາມພຽນທີ່ຢ່ອນເກີນໄປເປັນອຸປະກິເລດແຫ່ງຈິດ” ແລ້ວ ຈຶ່ງລະຄວາມພຽນທີ່ຢ່ອນເກີນໄປອັນເປັນອຸປະກິເລດແຫ່ງຈິດໄດ້

ຮູ້ແຈ້ງດັ່ງນີ້ວ່າ “ຕັນຫາ ທີ່ຖ້າຊຸ່ມໃສ່ເປັນອຸປະກິເລດແຫ່ງຈິດ” ແລ້ວ ຈຶ່ງລະຕັນຫາທີ່ຖ້າກະຊິບອັນເປັນອຸປະກິເລດແຫ່ງຈິດໄດ້

ຮູ້ແຈ້ງດັ່ງນີ້ວ່າ “ນານັດຕະສັນຍາເປັນອຸປະກິເລດແຫ່ງຈິດ” ແລ້ວ ຈຶ່ງລະນານັດຕະສັນຍາອັນເປັນອຸປະກິເລດແຫ່ງຈິດໄດ້

ຮູ້ແຈ້ງດັ່ງນີ້ວ່າ “ລັກສະນະທີ່ເພ່ງຮູບຫຼາຍເກີນໄປເປັນອຸປະກິເລດແຫ່ງຈິດ” ແລ້ວ ຈຶ່ງລະລັກສະນະທີ່ເພ່ງຮູບຫຼາຍເກີນໄປອັນເປັນອຸປະກິເລດແຫ່ງຈິດໄດ້

[໔໔໓] ອະນຸຣຸດທະ ນັນທິຍະ ແລະ ກິມພິລະ ຍ້ອນເຮົານັ້ນເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ຈຶ່ງຈືແສງສະຫວ່າງໄດ້ ແຕ່ບໍ່ເຫັນຮູບ ຍ້ອນເຮົາເຫັນຮູບ ແຕ່ຈືແສງສະຫວ່າງບໍ່ໄດ້ ຕະຫຼອດກາງຄືນແດ່ ຕະຫຼອດກາງເວັນແດ່ ຕະຫຼອດກາງຄືນ ແລະ ກາງເວັນແດ່ ເຮົານັ້ນຈຶ່ງຄິດວ່າ “ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ເຮົາຈືແສງສະຫວ່າງໄດ້ ແຕ່ບໍ່ເຫັນຮູບ ເຫັນຮູບໄດ້ ແຕ່ຈືແສງສະຫວ່າງບໍ່ໄດ້ ຕະຫຼອດກາງຄືນແດ່ ຕະຫຼອດກາງເວັນແດ່ ຕະຫຼອດກາງຄືນແລະກາງເວັນແດ່” ເຮົານັ້ນຄິດວ່າ “ສະໄໝໃດ ເຮົາບໍ່ໃສ່ໃຈນິມິດືຄືຮູບ ໃສ່ໃຈແຕ່ນິມິດຄືແສງສະຫວ່າງ ສະໄໝນັ້ນ ເຮົາຍ່ອມຈືແສງສະຫວ່າງໄດ້ ແຕ່ບໍ່ເຫັນຮູບ ແຕ່ສະໄໝໃດ ເຮົາບໍ່ໃສ່ໃຈນິມິດຄືແສງສະຫວ່າງ ໃສ່ໃຈແຕ່ນິມິດືຄືຮູບ ສະໄໝນັ້ນ ເຮົາຍ່ອມເຫັນຮູບ ແຕ່ຈືແສງສະຫວ່າງບໍ່ໄດ້ ຕະຫຼອດກາງຄືນແດ່ ຕະຫຼອດກາງເວັນແດ່ ຕະຫຼອດກາງຄືນແລະກາງເວັນແດ່”

ເຮົານັ້ນເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ຈຶ່ງຈືແສງສະຫວ່າງໄດ້ພຽງໜ່ອຍໜຶ່ງທໍ່ນັ້ນ ແລະ ເຫັນຮູບໄດ້ພຽງໜ່ອຍໜຶ່ງ ຈືແສງສະຫວ່າງອັນຫາປະມານບໍ່ໄດ້ ແລະເຫັນຮູບອັນຫາປະມານບໍ່ໄດ້ ຕະຫຼອດກາງຄືນແດ່ ຕະຫຼອດກາງເວັນແດ່ ຕະຫຼອດກາງຄືນແລະກາງເວັນແດ່ ເຮົາຈຶ່ງຄິດວ່າ “ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ເຮົາຈືແສງສະຫວ່າງໄດ້ພຽງໜ່ອຍໜຶ່ງທໍ່ນັ້ນ ແລະ ເຫັນຮູບໄດ້ພຽງໜ່ອຍໜຶ່ງ ຈືແສງສະຫວ່າງອັນຫາປະມານບໍ່ໄດ້ ແລະເຫັນຮູບອັນຫາປະມານບໍ່ໄດ້ ຕະຫຼອດກາງຄືນແດ່ ຕະຫຼອດກາງເວັນແດ່ ຕະຫຼອດກາງຄືນແລະກາງເວັນແດ່”

ເຮົານັ້ນໄດ້ຮູ້ວ່າ "ໃນສະໄໝໃດ ເຮົາມີສະມາທິຈັກໜ້ອຍ ສະໄໝນັ້ນ ເຮົາມີຈັກຂຸຈັກໜ້ອຍ ເຮົານັ້ນຈື່ແສງສະຫວ່າງໄດ້ພຽງໜ່ອຍໜຶ່ງທໍ່ນັ້ນ ແລະ ເຫັນຮູບໄດ້ພຽງໜ້ອຍໜຶ່ງ ດ້ວຍຈັກຂຸພຽງໜ່ອຍໜຶ່ງ ແຕ່ສະໄໝໃດ ເຮົາມີສະມາທິອັນຫາປະມານບໍ່ໄດ້ ສະໄໝນັ້ນ ເຮົາກໍມີຈັກຂຸອັນຫາປະມານບໍ່ໄດ້ ເຮົານັ້ນ ຈື່ແສງສະຫວ່າງອັນຫາປະມານບໍ່ໄດ້ ແລະ ເຫັນຮູບອັນຫາປະມານບໍ່ໄດ້ດ້ວຍຈັກຂຸອັນຫາປະມານບໍ່ໄດ້ ຕະຫຼອດກາງຄືນແດ່ ຕະຫຼອດກາງເວັນແດ່ ຕະຫຼອດກາງຄືນແລະກາງເວັນແດ່"

[໘໔໔] ອະນຸຣຸດທະ ນັນທິຍະ ແລະ ກິມພິລະ ໃນການໃດ ເຮົາຮູ້ແຈ້ງດັ່ງນີ້ວ່າ "ວິຈິກິດສາ ເປັນອຸປະກິເລດແຫ່ງຈິດ" ແລ້ວ ຈຶ່ງລະວິຈິກິດສາອັນເປັນອຸປະກິເລດແຫ່ງຈິດໄດ້

ຮູ້ແຈ້ງດັ່ງນີ້ວ່າ "ອະມະນະສິການເປັນອຸປະກິເລດແຫ່ງຈິດ" ແລ້ວ ຈຶ່ງລະອະມະນະສິການອັນເປັນອຸປະກິເລດແຫ່ງຈິດໄດ້

ຮູ້ແຈ້ງດັ່ງນີ້ວ່າ "ຖີນະມິດທະເປັນອຸປະກິເລດແຫ່ງຈິດ" ແລ້ວ ຈຶ່ງລະຖີນະມິດທະອັນເປັນອຸປະກິເລດແຫ່ງຈິດໄດ້

ຮູ້ແຈ້ງດັ່ງນີ້ວ່າ "ຄວາມສະດຸ້ງຢ້ານເປັນອຸປະກິເລດແຫ່ງຈິດ" ແລ້ວ ຈຶ່ງລະຄວາມສະດຸ້ງຢ້ານອັນເປັນອຸປະກິເລດແຫ່ງຈິດໄດ້

ຮູ້ແຈ້ງດັ່ງນີ້ວ່າ "ຄວາມຍິນດີໃຈເປັນອຸປະກິເລດແຫ່ງຈິດ" ແລ້ວ ຈຶ່ງລະຄວາມຍິນດີໃຈອັນເປັນອຸປະກິເລດແຫ່ງຈິດໄດ້

ຮູ້ແຈ້ງດັ່ງນີ້ວ່າ "ຄວາມຊົ່ວຫຍາບເປັນອຸປະກິເລດແຫ່ງຈິດ" ແລ້ວ ຈຶ່ງລະຄວາມຊົ່ວຫຍາບອັນເປັນອຸປະກິເລດແຫ່ງຈິດໄດ້

ຮູ້ແຈ້ງດັ່ງນີ້ວ່າ "ຄວາມພຽນທີ່ພໍ່າເພັງເກີນໄປເປັນອຸປະກິເລດແຫ່ງຈິດ" ແລ້ວ ຈຶ່ງລະຄວາມພຽນທີ່ພໍ່າເພັງເກີນໄປອັນເປັນອຸປະກິເລດແຫ່ງຈິດໄດ້

ຮູ້ແຈ້ງດັ່ງນີ້ວ່າ "ຄວາມພຽນທີ່ຢ່ອນເກີນໄປເປັນອຸປະກິເລດແຫ່ງຈິດ" ແລ້ວ ຈຶ່ງລະຄວາມພຽນທີ່ຢ່ອນເກີນໄປອັນເປັນອຸປະກິເລດແຫ່ງຈິດໄດ້

ຮູ້ແຈ້ງດັ່ງນີ້ວ່າ "ຕັນຫາທີ່ຖ້າກະຊິບເປັນອຸປະກິເລດແຫ່ງຈິດ" ແລ້ວ ຈຶ່ງລະຕັນຫາທີ່ຖ້າຊິມໃສ່ອັນເປັນອຸປະກິເລດແຫ່ງຈິດໄດ້

ຮູ້ແຈ້ງດັ່ງນີ້ວ່າ "ນານັດຕະສັນຍາເປັນອຸປະກິເລດແຫ່ງຈິດ" ແລ້ວ ຈຶ່ງລະນານັດຕະສັນຍາອັນເປັນອຸປະກິເລດແຫ່ງຈິດໄດ້

ຮູ້ແຈ້ງດັ່ງນີ້ວ່າ "ລັກສະນະທີ່ເພ່ງຮູບຫຼາຍເກີນໄປເປັນອຸປະກິເລດແຫ່ງຈິດ" ແລ້ວ ຈຶ່ງລະລັກສະນະທີ່ເພ່ງຮູບຫຼາຍເກີນໄປອັນເປັນອຸປະກິເລດແຫ່ງຈິດໄດ້

[໔໔໕] ອະນຸຣຸດທະ ນັນທິຍະ ແລະ ກິມພິລະ ໃນການນັ້ນ ເຮົານັ້ນໄດ້ຮູ້ວ່າ "ເຮົາລະອຸປະກິເລດແຫ່ງຈິດເຫຼົ່ານັ້ນໄດ້ແລ້ວ ຖ້າຈັ່ງຊັ້ນ ບັດນີ້ ເຮົາຈະຈະເລີນສະມາທິທັງ ៣ ປະການ"

ເຮົານັ້ນ ຈຶ່ງໄດ້ຈະເລີນສະມາທິທີ່ມີວິຕົກມີວິຈານແດ່ ໄດ້ຈະເລີນສະມາທິທີ່ບໍ່ມີວິຕົກ ມີພຽງວິຈານແດ່ ໄດ້ຈະເລີນສະມາທິທີ່ບໍ່ມີວິຕົກບໍ່ມີວິຈານແດ່ ໄດ້ຈະເລີນສະມາທິທີ່ມີປີຕິແດ່ ໄດ້ຈະເລີນສະມາທິທີ່ບໍ່ມີປີຕິແດ່ ໄດ້ຈະເລີນສະມາທິທີ່ປະກອບດ້ວຍຄວາມສຸກແດ່ ໄດ້ຈະເລີນສະມາທິທີ່ປະກອບດ້ວຍອຸເປກຂາແດ່

ອະນຸຣຸດທະ ນັນທິຍະ ແລະ ກິມພິລະ ໃນການໃດ ເຮົາຈະເລີນສະມາທິທີ່ມີວິຕົກມີວິຈານ ຈະເລີນສະມາທິທີ່ບໍ່ມີວິຕົກມີພຽງວິຈານ ຈະເລີນສະມາທິທີ່ບໍ່ມີວິຕົກ ບໍ່ມີວິຈານ ຈະເລີນສະມາທິທີ່ມີປີຕິ ຈະເລີນສະມາທິທີ່ບໍ່ມີປີຕິ ຈະເລີນສະມາທິທີ່ປະກອບດ້ວຍສຸກ ຈະເລີນສະມາທິທີ່ປະກອບດ້ວຍອຸເປກຂາ ໃນການນັ້ນ ຍານທັດສະນະໄດ້ເກີດຂຶ້ນແລ້ວແກ່ເຮົາວ່າ "ວິມຸດຕິຂອງເຮົາບໍ່ກຳເຣິບ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ພົບໃໝ່ບໍ່ມີອີກ"

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດພາສິດນີ້ແລ້ວ ທ່ານພຣະອະນຸຣຸດທະມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ອຸປັກກິເລດສູດທີ ໘ ຈົບ**

## ໙. ພາລະປັນທິຕະສູດ

### ວ່າດ້ວຍຄົນພານແລະບັນດິດ

[໔໔໖] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຢູ່ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

"ພິກຂຸທັງຫຼາຍ ລັກສະນະຂອງຄົນພານ[໑] ເຄື່ອງໝາຍຂອງຄົນພານ ຄວາມປະພຶດບໍ່ຂາດສາຍຂອງຄົນພານ ໓ ປະການນີ້

ລັກສະນະຂອງຄົນພານ ໓ ປະການ ອັນໃດແດ່

ຄື ຄົນພານໃນໂລກນີ້

໑. ມັກຄິດແຕ່ເລື້ອງຊົ່ວ[໒]
໒. ມັກເວົ້າແຕ່ເລື້ອງຊົ່ວ[໓]
໓. ມັກເຮັດແຕ່ກຳຊົ່ວ[໔]

ຖ້າຄົນພານບໍ່ມັກຄິດເລື້ອງຊົ່ວ ບໍ່ມັກເວົ້າເລື້ອງຊົ່ວ ບໍ່ມັກເຮັດກຳຊົ່ວເຊັ່ນນັ້ນ ບັນດິດທັງຫຼາຍ ຈະເພິ່ງຮູ້ຈັກເຂົາດ້ວຍເຫດໃດວ່າ "ຜູ້ນີ້ເປັນຄົນພານ ບໍ່ແມ່ນຄົນດີ" ແຕ່ຍ້ອນຄົນພານມັກຄິດແຕ່ເລື້ອງຊົ່ວ ມັກເວົ້າແຕ່ເລື້ອງຊົ່ວ ແລະ ມັກເຮັດແຕ່ກຳຊົ່ວ ສັນນັ້ນ ບັນດິດທັງຫຼາຍຈຶ່ງຮູ້ຈັກເຂົາວ່າ "ຜູ້ນີ້ເປັນຄົນພານ ບໍ່ແມ່ນຄົນດີ"[໕]

ຄົນພານນັ້ນ ຍ່ອມສະເຫວີຍທຸກໂທມະນັດ ໓ ປະການໃນປັດຈຸບັນ

ພິກຂຸທັງຫຼາຍ ຖ້າຄົນພານນັ່ງໃນສະພາກໍດີ ໃນຮ່ອມກໍດີ ຮິມທາງສາມແຍກກໍດີ ຖ້າຊົນໃນບ່ອນນັ້ນ ເວົ້າຄຳເວົ້າທີ່ສົມຄວນແກ່ທຳນັ້ນແກ່ເຂົາ ຖ້າຄົນພານເປັນຜູ້ຂ້າສັດ ເປັນຜູ້ລັກຊັບເປັນຜູ້ປະພຶດຜິດໃນກາມ ເປັນຜູ້ເວົ້າຕົວະ ເປັນຜູ້ເສບຂອງມຶນເມົາຄືສຸຣາແລະເມໄຣ[໖]ອັນເປັນເຫດແຫ່ງຄວາມຜະໝາດ ໃນເລື້ອງນັ້ນ ຄົນພານຈະມີຄວາມຮູ້ສຶກແນວນີ້ວ່າ "ຂໍ້ທີ່ຊົນເວົ້າຄຳເວົ້າທີ່ສົມຄວນແກ່ທຳນັ້ນ ທຳເຫຼົ່ານັ້ນມີຢູ່ໃນເຮົາ ແລະ ເຮົາກໍຜາກົດໃນທຳເຫຼົ່ານັ້ນ"

ພິກຂຸທັງຫຼາຍ ຄົນພານຍ່ອມສະເຫວີຍທຸກຂະໂທມະນັດປະການທີ ໑ ນີ້ໃນປັດຈຸບັນ

[໒໔໗] ພິກຂຸທັງຫຼາຍ ອີກປະການໜຶ່ງ ຄົນພານເຫັນພຣະຣາຊາຮັບສັ່ງໃຫ້ຈັບໂຈນຜູ້ປະພຶດຜິດມາແລ້ວ ລົງອາຍາໂດຍປະການຕ່າງ ໆ ຄື ໃຫ້ຂ້ຽນດ້ວຍແສ້ແດ່ ໃຫ້ຂ້ຽນດ້ວຍຫວາຍແດ່ ໃຫ້ຕີດ້ວຍໄມ້ຄ້ອນແດ່ ຕັດມືແດ່ ຕັດຕີນແດ່ ຕັດທັງມືແລະຕີນແດ່ ຕັດໃບຫູແດ່ ຕັດດັງແດ່ຕັດທັງໃບຫູແລະດັງແດ່ ວາງກ້ອນເຫຼັກແດງເທິງຫົວແດ່ ລອກໜັງຫົວແລ້ວຂັດໃຫ້ຂາວເໝືອນສັງແດ່ ເອົາໄຟຍັດປາກຈົນເລືອດໄຫຼເໝືອນປາກຣາຫູແດ່ ເອົາຜ້າພັນໂຕຮົດນ້ຳມັນແລ້ວໄຟເຜົາແດ່ພັນມືແລ້ວໄຟເຜົາຕາງຄົບໄຟແດ່ ລອກໜັງຕັ້ງແຕ່ຄໍເຖິງຂໍ້ຕີນໃຫ້ລຸກຍ່າງຢຽບໜັງຈົນລົ້ມລົງແດ່ລອກໜັງຕັ້ງແຕ່ຄໍເຖິງແອວ ເຮັດໃຫ້ແນມເບິ່ງຄືວ່ານຸ່ງຜ້າຄາກອງແດ່ ໃສ່ປອກເຫຼັກທີ່ແຂນສອກແລະເຂົ່າແລ້ວສຽບຫຼາວທັງ ໕ ທິດເອົາໄຟເຜົາແດ່ ໃຊ້ເບັດກ່ຽວໜັງ ຊີ້ນເອັນອອກມາແດ່ ປາດຊີ້ນອອກເປັນແວ່ນ ໆ ເໝືອນຫລຽນກະສາບແດ່ ປາດໜັງ ຊີ້ນ ເອັນ ອອກເຫຼືອໄວ້ແຕ່ກະດູກ

ແດ່ ໃຊ້ຫຼາວແທງຮູຫູໃຫ້ຊອດເຖິງກັນແດ່ ສຽບໃຫ້ຕິດດິນແລ້ວຈັບເຂົາປິ່ນໄດ້ຮອບແດ່ ທຸບກະດູກໃຫ້ແຫຼກແລ້ວລອກໜັງອອກເຫຼືອໄວ້ແຕ່ກອງຊີ້ນເໝືອນຕັ່ງໃບໄມ້ແດ່ ຫົດໂຕດ້ວຍນ້ຳມັນທີ່ກຳລັງຮ້ອນຟົດແດ່ ໃຫ້ໝາກັດກິນຈົນເຫຼືອແຕ່ກະດູກແດ່ ໃຫ້ນອນເທິງຫຼາວທັງເປັນແດ່ ຕັດຫົວອອກດ້ວຍດາບແດ່

ໃນຂະນະທີ່ເຫັນນັ້ນ ຄົນພານມີຄວາມຮູ້ສຶກແນວນີ້ວ່າ "ຍ້ອນເຫດແຫ່ງກຳແນວໃດ ພຣະຣາຊາທັງຫຼາຍ ຈຶ່ງຮັບສັ່ງໃຫ້ຈັບໂຈນຜູ້ປະພຶດຜິດມາແລ້ວລົງອາຍາໂດຍປະການຕ່າງ ໆ ຄື ໃຫ້ຂ້ຽນດ້ວຍແສ້ແດ່ ຯລຯ ຕັດຫົວອອກດ້ວຍດາບແດ່ ກໍທຳເຫຼົ່ານັ້ນມີຢູ່ໃນເຮົາ ແລະ ເຮົາກໍຜາກົດໃນທຳເຫຼົ່ານັ້ນ ຖ້າແມ່ນພຣະຣາຊາທັງຫຼາຍເພິ່ງຮູ້ຈັກເຮົາ ກໍຈະຮັບສັ່ງໃຫ້ຈັບເຮົາແລ້ວລົງອາຍາໂດຍປະການຕ່າງ ໆ ຄື ໃຫ້ຂ້ຽນດ້ວຍແສ້ແດ່ ຯລຯ ໃຫ້ນອນເທິງຫລາວທັງເປັນແດ່ ຕັດຫົວອອກດ້ວຍດາບແດ່໌

ພິກຂຸທັງຫຼາຍ ຄົນພານຍ່ອມສະເຫວີຍທຸກຂະໂທມະນັດປະການທີ ໔ ນີ້ໃນປັດຈຸບັນ

[໔໕໗] ອີກປະການໜຶ່ງ ໃນສະໄໝນັ້ນ ບາບກຳທີ່ຄົນພານເຮັດ ຄື ການປະພຶດກາຍທຸດຈະຣິດ ການປະພຶດວະຈີທຸດຈະຣິດ ການປະພຶດມະໂນທຸດຈະຣິດໄວ້ໃນການກ່ອນ ຍ່ອມໜ່ວງໜ່ຽວບົດບັງ ຄອບງຳຄົນພານຜູ້ຢູ່ເທິງຕັ່ງ ເທິງຕຽງ ຫຼື ນອນເທິງພື້ນ

ປຽບຄື ເງົາຂອງຈອມພູໃຫຍ່ ຍ່ອມກັ້ນ ບົດບັງ ຄອບຄຸມແຜ່ນດິນໃຫຍ່ ໃນເວລາຄ່ຳແມ່ນສັນໃດ ໃນສະໄໝນັ້ນ ບາບກຳທີ່ຄົນພານເຮັດ ຄື ການປະພຶດກາຍທຸດຈະຣິດ ການປະພຶດວະຈີທຸດຈະຣິດ ການປະພຶດມະໂນທຸດຈະຣິດໄວ້ໃນການກ່ອນ ຍ່ອມໜ່ວງໜ່ຽວບົດບັງ ຄອບງຳຄົນພານຜູ້ຢູ່ເທິງຕັ່ງ ເທິງຕຽງ ຫຼື ນອນເທິງພື້ນ ຄືກັນສັນນັ້ນ

ໃນເລື້ອງນັ້ນ ຄົນພານມີຄວາມຄິດແນວນີ້ວ່າ "ເຮົາຍັງບໍ່ໄດ້ທຳຄວາມດີໄວ້ນໍ ຍັງບໍ່ໄດ້ທຳກຸສົນໄວ້ ບໍ່ໄດ້ເຮັດທີ່ປ້ອງກັນສິ່ງເປັນຕາຢ້ານໄວ້ ເຮັດແຕ່ຄວາມຊົ່ວ ເຮັດແຕ່ກຳຫຍາບຊ້າ ເຮັດແຕ່ກຳເສົ້າໝອງ ເຮົາຕາຍແລ້ວ ຈະໄປສູ່ຄະຕິຂອງຜູ້ບໍ່ໄດ້ທຳຄວາມດີໄວ້ ບໍ່ໄດ້ທຳກຸສົນໄວ້ ບໍ່ໄດ້ເຮັດທີ່ປ້ອງກັນສິ່ງເປັນຕາຢ້ານໄວ້ ເຮັດແຕ່ຄວາມຊົ່ວ ເຮັດແຕ່ກຳຫຍາບຊ້າ ເຮັດແຕ່ກຳເສົ້າໝອງນັ້ນ" ເຂົາຍ່ອມເສົ້າໂສກ ລຳບາກໃຈ ຮ່ຳໄຮ ຕີເອິກ ໄຫ້ຈົ່ມ ເຖິງຄວາມຫຼົງໄຫຼ

ພິກຂຸທັງຫຼາຍ ຄົນພານຍ່ອມສະເຫວີຍທຸກຂະໂທມະນັດປະການທີ ໕ ນີ້ໃນປັດຈຸບັນ

ພິກຂຸທັງຫຼາຍ ຄົນພານນັ້ນຍັງປະພຶດກາຍທຸດຈະຣິດ ປະພຶດວະຈີທຸດຈະຣິດ ປະພຶດມະໂນທຸດຈະຣິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງນະຮົກນັ້ນນັ້ນແລວ່າ "ເປັນສະຖານທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ໂດຍສ່ວນດຽວ" ທຸກນີ້ກັບທຸກໃນນະຮົກປຽບທຽບກັນບໍ່ໄດ້"

[໔໕໗] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຈະຊົງອຸປະມາໄດ້ອີກບໍ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໄດ້ ພິກຂຸ" ແລ້ວຕັດວ່າ "ປຽບຄື ຣາດຊະບຸຣຸດທັງຫຼາຍຈັບໂຈນຜູ້ປະພຶດຜິດໄດ້ແລ້ວ ຈຶ່ງສະແດງແກ່ພຣະຣາຊາວ່າ "ຂໍເດຊະ ຜູ້ນີ້ເປັນໂຈນປະພຶດຜິດຕໍ່ພຣະອົງ ຂໍພຣະອົງຈົ່ງຊົງລົງພຣະອາຍາຕາມທີ່ຊົງພຣະຣາດຊະປະສົງ ແກ່ໂຈນຜູ້ນີ້ເທີ້ນ"

ພຣະຣາຊາມີພຣະກະແສຮັບສັ່ງວ່າ "ທ່ານທັງຫຼາຍ ຈົ່ງໄປຊ່ອຍກັນປະຫານບຸຣຸດນີ້ດ້ວຍຫອກ ໑໐໐ ເຫຼັ້ມໃນເວລາເຊົ້າ" ຣາດຊະບຸຣຸດທັງຫຼາຍ ກໍຊ່ອຍກັນປະຫານບຸຣຸດຄົນນັ້ນດ້ວຍຫອກ ໑໐໐ ເຫຼັ້ມໃນເວລາເຊົ້າ

ຕໍ່ມາໃນເວລາທ່ຽງ ພຣະຣາຊາຊົງຊັກຖາມຣາຊະບຸຣຸດທັງຫຼາຍວ່າ "ທ່ານທັງຫຼາຍ ບຸຣຸດນັ້ນເປັນແນວໃດແດ່"

ຣາດຊະບຸຣຸດທັງຫຼາຍຂາບທູນວ່າ "ເຂົາຍັງມີຊີວິດຢູ່ ຂ້ານ້ອຍ"

ພຣະຣາຊາຈຶ່ງມີພຣະກະແສຮັບສັ່ງວ່າ "ທ່ານທັງຫຼາຍ ຈົ່ງໄປຊ່ອຍກັນປະຫານບຸຣຸດຄົນນັ້ນດ້ວຍຫອກ ໑໐໐ ເຫຼັ້ມໃນເວລາທ່ຽງ" ຣາດຊະບຸຣຸດທັງຫຼາຍ ກໍຊ່ອຍກັນປະຫານບຸຣຸດຄົນນັ້ນດ້ວຍຫອກ ໑໐໐ ເຫຼັ້ມໃນເວລາທ່ຽງ

ຕໍ່ມາໃນເວລາຄໍ່າ ພຣະຣາຊາຊົງຊັກຖາມຣາຊະບຸຣຸດທັງຫຼາຍອີກວ່າ "ທ່ານທັງຫຼາຍ ບຸຣຸດຄົນນັ້ນເປັນແນວໃດແດ່?"

"ເຂົາຍັງມີຊີວິດຢູ່ ຂ້ານ້ອຍ"

"ທ່ານທັງຫຼາຍ ຈົ່ງໄປຊ່ອຍກັນປະຫານບຸຣຸດຄົນນັ້ນດ້ວຍຫອກ ໑໐໐ ເຫຼັ້ມໃນເວລາຄໍ່າ" ຣາດຊະບຸຣຸດທັງຫຼາຍ ຈຶ່ງຊ່ອຍກັນປະຫານບຸຣຸດຄົນນັ້ນດ້ວຍຫອກ ໑໐໐ ເຫຼັ້ມໃນເວລາຄໍ່າ

ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ?

ຄື ບຸຣຸດນັ້ນ ຖືກປະຫານດ້ວຍຫອກ ໓໐໐ ເຫຼັ້ມ ເພິ່ງສະເຫວີຍທຸກຂະໂທມະນັດຍ້ອນການປະຫານນັ້ນເປັນເຫດແດ່ບໍ?"

"ບຸຣຸດນັ້ນ ແມ່ນຖືກປະຫານດ້ວຍຫອກ ໑ ເຫຼັ້ມ ຍັງໄດ້ສະເຫວີຍທຸກຂະໂທມະນັດເຊິ່ງມີການປະຫານນັ້ນເປັນເຫດ ບໍ່ຕ້ອງເວົ້າຮອດການທີ່ບຸຣຸດນັ້ນຖືກປະຫານດ້ວຍຫອກຕັ້ງ ໓໐໐ ເຫຼັ້ມ ຂ້ານ້ອຍ"

[໔໕໐] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຈັບກ້ອນຫີນຂະໜາດພໍປະມານ ທໍ່ຝາມືຂຶ້ນມາ ແລ້ວຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ ວ່າ

"ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ກ້ອນຫີນຂະໜາດພໍປະມານ ທໍ່ຝາມືທີ່ເຮົາຖືຢູ່ນີ້ກັບພູຫຼວງຫິມະພານ ແນວໃດໃຫຍ່ກວ່າກັນ"

"ກ້ອນຫີນຂະໜາດພໍປະມານ ທໍ່ຝາພຣະຫັດທີ່ພຣະອົງຊົງຖືຢູ່ນີ້ ມີປະມານໜ້ອຍແທ້ ປຽບທຽບກັບພູຫຼວງຫິມະພານແລ້ວ ບໍ່ເຖິງແມ່ນການນັບ ບໍ່ເຖິງແມ່ນສ່ວນແຫ່ງສັງວ ບໍ່ເຖິງແມ່ນການທຽບກັນໄດ້ ຂ້ານ້ອຍ"

"ພິກຂຸທັງຫຼາຍ ຄືກັນສັນນັ້ນ ທຸກໂທມະນັດຍ້ອນການປະຫານນັ້ນ ເປັນເຫດທີ່ບຸຣຸດຖືກປະຫານດ້ວຍຫອກ ໓໐໐ ເຫຼັ້ມ ສະເຫວີຍຢູ່ນັ້ນ ປຽບທຽບກັບທຸກແຫ່ງນະຣົກແລ້ວ ບໍ່ເຖິງແມ່ນການນັບ ບໍ່ເຖິງແມ່ນສ່ວນແຫ່ງສັງວ ບໍ່ເຖິງແມ່ນການທຽບກັນໄດ້ ນາຍນິຣະຍະບານທັງຫຼາຍເຮັດເຄື່ອງຈອງຈຳຊື່ເຄື່ອງພັນທະນາການ ໕ ຢ່າງ ຄື ຕອກຕະປູເຫຼັກຮ້ອນແດງທີ່ມື ໔ ຂ້າງ ທີ່ຕີນ ໔ ຂ້າງ ແລະທີ່ກາງເອິກ ຄົນພານນັ້ນສະເຫວີຍທຸກຂະເວທະນາອັນແຮງກ້າ ຢ່າງໜັກ ເຜັດຮ້ອນ ໃນບ່ອນນັ້ນ ແຕ່ຍັງບໍ່ຕາຍຕາບທໍ່ທີ່ບາບກຳຍັງບໍ່ສິ້ນໄປ

ນາຍນິຣະຍະບານລາກເຂົາໄປ ເອົາຂວານຖາກ ຄົນພານນັ້ນສະເຫວີຍທຸກຂະເວທະນາອັນແຮງກ້າ ໆລໆ ຕາບທໍ່ທີ່ບາບກຳຍັງບໍ່ໝົດໄປນາຍນິຣະຍະບານຈັບເຂົາເອົາຕີນຂຶ້ນ ເອົາຫົວລົງ ເອົາມີດປາດ ຄົນພານນັ້ນ ສະເຫວີຍທຸກຂະເວທະນາອັນແຮງກ້າ ໆລໆ ຕາບທໍ່ທີ່ບາບກຳຍັງບໍ່ໝົດໄປ ນາຍນິຣະຍະບານຈັບເຂົາທຽມລົດແລ່ນກັບໄປກັບມາເທິງພື້ນອັນຮ້ອນລຸກເປັນແປວຮຸ່ງສະຫວ່າງສະໄຫວ ຄົນພານນັ້ນ ສະເຫວີຍທຸກຂະເວທະນາອັນແຮງກ້າ ຢ່າງໜັກ ເຜັດຮ້ອນໃນບ່ອນນັ້ນ ໆລໆ ຕາບທໍ່ທີ່ບາບກຳຍັງບໍ່ໝົດໄປນາຍນິຣະຍະບານບັງຄັບເຂົາໃຫ້ຂຶ້ນລົງພູຖ່ານໄຟໜ່ວຍໃຫຍ່ທີ່ໄຟລຸກເປັນແປວຮຸ່ງສະຫວ່າງສະໄຫວ ຄົນພານນັ້ນສະເຫວີຍທຸກຂະເວທະນາອັນແຮງກ້າ ຢ່າງໜັກ ເຜັດຮ້ອນຢູ່ ເທິງພູຖ່ານໄຟນັ້ນ ແຕ່ຍັງບໍ່ຕາຍຕາບທໍ່ທີ່ບາບກຳຍັງບໍ່ໝົດໄປນາຍນິຣະຍະບານຈັບເຂົາເອົາຕີນຂຶ້ນ ເອົາຫົວລົງ ຖິ້ມລົງໃນໂລຫະກຸມພີ (ໝໍ້ທອງແດງ) ອັນຮ້ອນແດງລຸກເປັນແສງໄຟ ຄົນພານນັ້ນ ຖືກຕົ້ມຮ້ອນຈົນໂຕພອງໃນໂລຫະກຸມພີນັ້ນ ເຂົາເມື່ອຖືກຕົ້ມຮ້ອນຈົນໂຕພອງໃນໂລຫະກຸມພີນັ້ນ ລາງເທື່ອລອຍຂຶ້ນ ລາງເທື່ອຈົມລົງ ລາງເທື່ອລອຍຂວາງ ເຂົາສະເຫວີຍທຸກຂະເວທະນາ ກ້າຢ່າງໜັກ ເຜັດຮ້ອນ ຢູ່ໃນໂລຫະກຸມພີອັນຮ້ອນແດງນັ້ນ ແຕ່ຍັງບໍ່ຕາຍຕາບທໍ່ທີ່ບາບກຳຍັງບໍ່ໝົດໄປນາຍນິຣະຍະບານຈຶ່ງຖິ້ມເຂົາລົງໃນມະຫານະຣົກ

ກໍມະຫານະຣົກນັ້ນ

ມີ ໔ ແຈ ໔ ປະຕູ ແບ່ງອອກເປັນສ່ວນ

ມີກຳແພງເຫຼັກອ້ອມຮອບ ກວມດ້ວຍຝາເຫຼັກ
ມະຫານະຣົກນັ້ນ ມີພື້ນເປັນເຫຼັກ ລຸກຮຸ່ງສະຫວ່າງສະໄຫວ
ແຜ່ໄປໄກດ້ານລະ ໑໐໐ ໂຍດ ຕັ້ງຢູ່ຕະຫຼອດເວລາ[1]

ພິກຂຸທັງຫຼາຍ ທຸກນີ້ກັບທຸກໃນນະຣົກປຽບທຽບກັນດ້ວຍການບອກບໍ່ໄດ້

[໘໕໑] ພິກຂຸທັງຫຼາຍ ສັດເດຍຣັດສານຈຳພວກມີຫຍ້າເປັນອາຫານມີຢູ່ ສັດເດຍຣັດສານເຫຼົ່ານັ້ນໃຊ້ແຂ້ວເລັມຫຍ້າສົດແດ່ ຫຍ້າແຫ້ງແດ່

ສັດເດຍຣັດສານຈຳພວກມີຫຍ້າເປັນອາຫານ ພວກໃດແດ່?

ຄື ຊ້າງ ມ້າ ງົວ ລາ ແບ້ ກວາງ ຫຼື ສັດເດຍຣັດສານຈຳພວກອື່ນລາງພວກທີ່ມີຫຍ້າເປັນອາຫານ ໃນເບື້ອງຕົ້ນ ຄົນພານໃນໂລກນີ້ນັ້ນ ຕິດໃຈໃນຣົດ ເຮັດບາບກຳໄວ້ໃນໂລກນີ້ ຫຼັງຈາກຕາຍແລ້ວ ຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບສັດຈຳພວກທີ່ມີຫຍ້າເປັນອາຫານເຫຼົ່ານັ້ນ

ສັດເດຍຣັດສານຈຳພວກມີຄູດເປັນອາຫານມີຢູ່ ສັດເດຍຣັດສານເຫຼົ່ານັ້ນໄດ້ກິ່ນຄູດແຕ່ທີ່ໄກແລ້ວ ຍ່ອມແລ່ນໄປດ້ວຍຫວັງວ່າ “ຈັກກິນກົງນີ້ ຈັກກິນກົງນີ້”

ປຽບຄືພາມຍ່າງໄປຕາມກິ່ນເຄື່ອງບູຊາດ້ວຍໝາຍໃຈວ່າ “ຈັກກິນກົງນີ້ ຈັກກິນກົງນີ້” ແມ່ນສັນໃດ ສັດເດຍຣັດສານຈຳພວກມີຄູດເປັນອາຫານເຫຼົ່ານັ້ນ ຄືກັນສັນນັ້ນ ໄດ້ກິ່ນຄູດແຕ່ທີ່ໄກແລ້ວ ຍ່ອມແລ່ນໄປດ້ວຍຫວັງວ່າ “ຈັກກິນກົງນີ້ ຈັກກິນກົງນີ້”

ສັດເດຍຣັດສານຈຳພວກມີຄູດເປັນອາຫານ ພວກໃດແດ່ ຄື ໄກ່ ໝູ ໝາບ້ານ ໝາປ່າ ຫຼືສັດເດຍຣັດສານຈຳພວກອື່ນລາງພວກທີ່ມີຄູດ ເປັນອາຫານໃນເບື້ອງຕົ້ນ ຄົນພານໃນໂລກນີ້ນັ້ນ ຕິດໃຈໃນຣົດ ເຮັດບາບກຳໄວ້ໃນໂລກນີ້ ຫຼັງຈາກຕາຍແລ້ວ ຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບສັດຈຳພວກທີ່ມີຄູດເປັນອາຫານເຫຼົ່ານັ້ນ

ສັດເດຍຣັດສານ ຈຳພວກທີ່ເກີດໃນບ່ອນມືດ ແກ່ໃນບ່ອນມືດ ຕາຍໃນບ່ອນມືດ ມີຢູ່ ສັດເດຍຣັດສານຈຳພວກທີ່ເກີດໃນບ່ອນມືດ ແກ່ໃນບ່ອນມືດ ຕາຍໃນບ່ອນມືດ ພວກໃດແດ່ ຄື ແມງ ມອດ ຂີ້ກະເດືອນ ຫຼືສັດເດຍຣັດສານຈຳພວກອື່ນລາງພວກທີ່ເກີດໃນບ່ອນມືດ ແກ່ໃນບ່ອນມືດ ຕາຍໃນບ່ອນມືດ

ໃນເບື້ອງຕົ້ນ ຄົນພານໃນໂລກນີ້ນັ້ນ ຕິດໃຈໃນຣົດ ເຮັດບາບກຳໄວ້ໃນໂລກນີ້ ຫຼັງຈາກຕາຍແລ້ວ ຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບສັດຈຳພວກທີ່ເກີດໃນບ່ອນມືດ ແກ່ໃນບ່ອນມືດ ຕາຍໃນບ່ອນມືດເຫຼົ່ານັ້ນ

ສັດເດຍຣັດສານຈຳພວກທີ່ເກີດໃນນ້ຳ ແກ່ໃນນ້ຳ ຕາຍໃນນ້ຳ ມີຢູ່ ສັດເດຍຣັດສານຈຳພວກທີ່ເກີດໃນນ້ຳ ແກ່ໃນນ້ຳ ຕາຍໃນນ້ຳ ພວກໃດແດ່? ຄື ປາ ເຕົ່າ ແຂ້ ຫຼື ສັດເດຍຣັດສານຈຳພວກອື່ນລາງພວກທີ່ເກີດໃນນ້ຳ ແກ່ໃນນ້ຳ ຕາຍໃນນ້ຳ

ໃນເບື້ອງຕົ້ນ ຄົນພານໃນໂລກນີ້ນັ້ນ ຕິດໃຈໃນຣົດ ເຮັດບາບກຳໄວ້ໃນໂລກນີ້ ຫຼັງຈາກຕາຍແລ້ວ ຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບສັດຈຳພວກທີ່ເກີດໃນນ້ຳ ແກ່ໃນນ້ຳ ຕາຍໃນນ້ຳເຫຼົ່ານັ້ນ

ສັດເດຍຣັດສານຈຳພວກທີ່ເກີດໃນບ່ອນສົກກະປົກ ແກ່ໃນບ່ອນສົກກະປົກ ຕາຍໃນບ່ອນສົກກະປົກ ມີຢູ່ ສັດເດຍຣັດສານຈຳພວກທີ່ເກີດໃນບ່ອນສົກກະປົກ ແກ່ໃນບ່ອນສົກກະປົກ ຕາຍໃນບ່ອນສົກກະປົກ ພວກໃດແດ່ ຄື ສັດເດຍຣັດສານຈຳພວກທີ່ເກີດໃນປາເນົ່າ ແກ່ໃນປາເນົ່າ ຫຼືຕາຍໃນປາເນົ່າ ສັດເດຍຣັດສານຈຳພວກທີ່ເກີດໃນສົບເນົ່າ ຯລຯ ສັດເດຍຣັດສານຈຳພວກທີ່ເກີດໃນເຂົ້າໜົມກຸມມາດທີ່ບູດ ຯລຯ ສັດເດຍຣັດສານຈຳພວກທີ່ເກີດໃນນ້ຳສົກກະປົກ ຯລຯ ສັດເດຍຣັດສານຈຳພວກທີ່ເກີດໃນຂຸມສົກກະປົກ ຯລຯ ສັດເດຍຣັດສານຈຳພວກອື່ນທີ່ເກີດໃນບ່ອນສົກກະປົກ ແກ່ໃນບ່ອນສົກກະປົກ ຕາຍໃນບ່ອນສົກກະປົກ

ໃນເບື້ອງຕົ້ນ ຄົນພານໃນໂລກນີ້ນັ້ນ ຕິດໃຈໃນຣົດ ເຮັດບາບກຳໄວ້ໃນໂລກນີ້ ຫຼັງຈາກຕາຍແລ້ວ ຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບສັດຈຳພວກທີ່ເກີດໃນບ່ອນສົກກະປົກ ແກ່ໃນບ່ອນສົກກະປົກ ຕາຍໃນບ່ອນສົກກະປົກເຫຼົ່ານັ້ນ

ພິກຂຸທັງຫຼາຍ ທຸກນີ້ກັບທຸກໃນກຳເນີດສັດເດຍຣັດສານປຽບທຽບກັນດ້ວຍການບອກບໍ່ໄດ້

[໔໕໔] ພິກຂຸທັງຫຼາຍ ບຸຣຸດເພິ່ງໂຍນແອກທີ່ມີຮູດຽວລົງໄປໃນມະຫາສະມຸດ ລົມທາງທິດຕາເວັນອອກພັດແອກນັ້ນ ໄປທາງທິດຕາເວັນຕົກ ລົມທາງທິດຕາເວັນຕົກພັດແອກນັ້ນໄປທາງທິດຕາເວັນອອກ ລົມທາງທິດເໜືອພັດແອກນັ້ນໄປທາງທິດໃຕ້ ລົມທາງທິດໃຕ້ພັດແອກນັ້ນໄປທາງທິດເໜືອ ໃນມະຫາສະມຸດນັ້ນ ມີເຕົ່າຕາບອດຢູ່ໂຕໜຶ່ງ ຜ່ານໄປ ໑໐໐ ປີ ມັນຈະໂປ່ໂລ່ຂຶ້ນມາຄັ້ງໜຶ່ງ

ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ?

ຄື ເຕົ່າຕາບອດນັ້ນເພິ່ງປ່ອນຄໍເຂົ້າໄປໃນແອກທີ່ມີຮູດຽວນັ້ນໄດ້ແດ່ບໍ?”

“ບໍ່ໄດ້ ຂ້ານ້ອຍ ແຕ່ຖ້າເວລາລ່ວງເລີຍໄປດົນ ໆ ລາງເທື່ອລາງເວລາມັນກໍຈະປ່ອນເຂົ້າໄປໃນແອກນັ້ນໄດ້ແດ່ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ພິກຂຸທັງຫຼາຍ ເຕົ່າຕາບອດນັ້ນເພິ່ງປ່ອນຄໍເຂົ້າໄປໃນແອກທີ່ມີຮູດຽວນັ້ນຍັງໄວກວ່າ ເຮົາກ່າວວ່າການທີ່ຄົນພານຜູ້ໄປສູ່ວິນິບາດເວລາດຽວຈະເພິ່ງໄດ້ເປັນມະນຸດອີກຍາກກວ່ານັ້ນ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນໃນວິນິບາດນັ້ນ ບໍ່ມີການປະພຶດທຳ ບໍ່ມີການປະພຶດຊອບ ບໍ່ມີການທຳກຸສົນ ບໍ່ມີການທຳບຸນ ໃນວິນິບາດນັ້ນ ມີແຕ່ສັດຜູ້ຫຍໍ້າກິນກັນເອງ ຫຍໍ້າກິນສັດຜູ້ມີກຳລັງນ້ອຍກວ່າ[੭]

ຄົນພານນັ້ນ ຍ້ອນເວລາລ່ວງເລີຍມາດົນ ໃນລາງເທື່ອລາງເວລາຖ້າມາເກີດເປັນມະນຸດກໍຈະເກີດໃນຕະກູນຕໍ່າ ຄື ຕະກູນຄົນຈັນທານ ຕະກູນນາຍພານ ຕະກູນຊ່າງສານ ຕະກູນຊ່າງລົດ ຫຼື ຕະກູນຄົນຂົນຂີ້ເຫຍື້ອເຊັ່ນນັ້ນ ທີ່ເປັນຕະກູນຍາກຈົນ ມີເຂົ້າ ນໍ້າ ແລະ ສິ່ງຂອງເຄື່ອງໃຊ້ໜ້ອຍເປັນໄປແບວຝືດເຄືອງ ເປັນແຫຼ່ງທີ່ຫາຂອງກິນແລະເຄື່ອງນຸ່ງຫົ່ມ ໄດ້ຍາກ ແລະຄົນພານນັ້ນມີຜິວພັນໝົ່ນໝອງ ບໍ່ໜ້າເບິ່ງ ຕໍ່າເຕ້ຍ ມີຄວາມເຈັບປ່ວຍຫຼາຍ ຕາບອດ ເປັນງ່ອຍເປັນຄົນບໍ່ສົມປະກອບ ຫຼື ເປັນພະຍາດອຳມະພາດ ມັກບໍ່ໄດ້ເຂົ້າ ນໍ້າ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະ ເຄື່ອງປະທີບ ເຂົາຍັງປະພຶດກາຍທຸດຈະຣິດ ປະພຶດວະຈີທຸດຈະຣິດ ປະພຶດມະໂນທຸດຈະຣິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ[໒]

ພິກຂຸທັງຫຼາຍ ປຽບຄື ນັກເລງການພະນັນ ຍ້ອນຄວາມພ່າຍແພ້ເທື່ອທຳອິດທີ່ນັ້ນ ຈຶ່ງເສຍລູກ ເສຍເມຍ ເສຍຊັບສົມບັດທຸກແນວ ແລະ ເຖິງການຄຸມຂັງ ທີ່ເປັນການສູນເສຍຢ່າງຍິ່ງ ຄວາມພ່າຍແພ້ ຂອງນັກເລງການພະນັນຜູ້ເສຍລູກ ເສຍເມຍ ເສຍຊັບສົມບັດທຸກແນວ ແລະເຖິງການຄຸມຂັງຍ້ອນຄວາມພ່າຍແພ້ເທື່ອທຳອິດນັ້ນ ເປັນພຽງເລັກໜ້ອຍ ແມ່ນສັນໃດ ຄວາມພ່າຍແພ້ຂອງຄົນພານຜູ້ປະພຶດກາຍທຸດຈະຣິດ ປະພຶດວະຈີທຸດຈະຣິດ ປະພຶດມະໂນທຸດຈະຣິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ສັນນັ້ນຄືກັນ

ນີ້ເປັນພູມຂອງຄົນພານທີ່ຄົນພານພໍ່າເພັງໄວ້ທັງໝົດ

[໒໕໓] ພິກຂຸທັງຫຼາຍ ລັກສະນະຂອງບັນດິດ ເຄື່ອງໝາຍຂອງບັນດິດ ຄວາມປະພຶດບໍ່ຂາດສາຍຂອງບັນດິດ ໓ ປະການນີ້

ລັກສະນະຂອງບັນດິດ ໓ ປະການ ອັນໃດແດ່?

ຄື ບັນດິດໃນໂລກນີ້

໑. ມັກຄິດແຕ່ເລື້ອງດີ
໔. ມັກເວົ້າແຕ່ເລື້ອງດີ
໓. ມັກເຮັດແຕ່ກຳດີ

ຖ້າບັນດິດບໍ່ມັກຄິດເລື້ອງດີ ບໍ່ມັກເວົ້າເລື້ອງດີ ແລະ ບໍ່ມັກເຮັດກຳດີຄືດັ່ງນັ້ນ ບັນດິດທັງຫຼາຍຈະເພິ່ງຮູ້ຈັກເຂົາດ້ວຍເຫດໃດວ່າ "ຜູ້ນີ້ເປັນບັນດິດ ເປັນຄົນດີ" ແຕ່ຍ້ອນບັນດິດມັກຄິດແຕ່ເລື້ອງດີ ມັກເວົ້າແຕ່ເລື້ອງດີ ແລະ ມັກເຮັດແຕ່ກຳດີ ສັນນັ້ນ ບັນດິດທັງຫຼາຍຈຶ່ງຮູ້ຈັກເຂົາວ່າ "ຜູ້ນີ້ເປັນບັນດິດ ເປັນຄົນດີ"

ບັນດິດນັ້ນ ຍ່ອມສະເຫວີຍສຸກໂສມະນັດ ໓ ປະການໃນປັດຈຸບັນ

ພິກຂຸທັງຫຼາຍ ຖ້າບັນດິດນັ່ງໃນສະພາກໍດີ ໃນຮ່ອມກໍດີ ຮີມທາງສາມແຍກກໍດີ ຖ້າຊົນໃນບ່ອນນັ້ນເວົ້າຄຳເວົ້າທີ່ສົມຄວນແກ່ທຳນັ້ນແກ່ເຂົາ ຖ້າບັນດິດເປັນຜູ້ເວັ້ນຂາດຈາກການຂ້າສັດ ເປັນຜູ້ເວັ້ນຂາດຈາກການລັກຊັບ ເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ ເປັນຜູ້ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ໃນເລື້ອງນັ້ນ ບັນດິດຈະມີຄວາມຮູ້ສຶກແນວນີ້ວ່າ "ຂໍ້ທີ່ຊົນເວົ້າຄຳເວົ້າທີ່ສົມຄວນແກ່ທຳນັ້ນ ທຳເຫຼົ່ານັ້ນມີຢູ່ໃນເຮົາ ແລະ ເຮົາກໍຜາກົດໃນທຳເຫຼົ່ານັ້ນ"

ພິກຂຸທັງຫຼາຍ ບັນດິດຍ່ອມສະເຫວີຍສຸກໂສມະນັດປະການທີ ໑ ນີ້ໃນປັດຈຸບັນ

[໔໕໔] ອີກປະການໜຶ່ງ ບັນດິດເຫັນພຣະຣາຊາທັງຫຼາຍຮັບສັ່ງໃຫ້ຈັບໂຈນຜູ້ປະພຶດຜິດມາລົງອາຍາດ້ວຍປະການຕ່າງ ໆ ຄື ໃຫ້ຂ້ຽນດ້ວຍແສ້ແດ່ ໃຫ້ຂ້ຽນດ້ວຍຫວາຍແດ່ ໃຫ້ຕີດ້ວຍໄມ້ຄ້ອນແດ່ ຕັດມືແດ່ ຕັດຕີນແດ່ ຕັດທັງມືແລະຕີນແດ່ ຕັດໃບຫູແດ່ ຕັດດັງແດ່ ຕັດທັງໃບຫູແລະດັງແດ່ ວາງກ້ອນເຫຼັກແດງເທິງຫົວແດ່ ລອກໜັງຫົວແລ້ວຂັດໃຫ້ຂາວເໝືອນສັງແດ່ ເອົາໄຟຍັດປາກຈົນເລືອດໄຫຼເໝືອນປາກຣາຫູແດ່ ເອົາຜ້າພັນໂຕຮົດນ້ຳມັນແລ້ວໄຟເຜົາແດ່ ພັນມືແລ້ວໄຟເຜົາຕາງຄົບໄຟແດ່ ລອກໜັງຕັ້ງແຕ່ຄໍເຖິງຂໍ້ຕີນໃຫ້ລຸກຍ່າງຢຽບໜັງຈົນລົ້ມລົງແດ່ ລອກໜັງຕັ້ງແຕ່ຄໍເຖິງແອວ ເຮັດໃຫ້ແນມເບິ່ງຄືວ່ານຸ່ງຜ້າຄາກອງແດ່ ໃສ່ປອກເຫຼັກທີ່ແຂນສອກແລະເຂົ່າແລ້ວສຽບຫຼາວທັງ ໕ ທິດເອົາໄຟເຜົາແດ່ ໃຊ້ເບັດກຽວໜັງ ຊີ້ນ ເອັນອອກມາແດ່ ປາດຊີ້ນອອກເປັນແວ່ນ ໆ ເໝືອນຫຼຽນກະສາບແດ່ ປາດໜັງ ຊີ້ນ ເອັນ ອອກເຫຼືອໄວ້ແຕ່ກະດູກແດ່ ໃຊ້ຫຼາວແທງຮູຫູໃຫ້ຊອດເຖິງກັນແດ່ ສຽບໃຫ້ຕິດດິນແລ້ວຈັບເຂົາປິ່ນໄດ້ຮອບແດ່ ທຸບກະດູກໃຫ້ແຫຼກແລ້ວລອກໜັງອອກເຫຼືອໄວ້ແຕ່ກອງຊີ້ນເໝືອນ ຕັ່ງໃບໄມ້ແດ່ ຮົດໂຕດ້ວຍນ້ຳມັນທີ່ກຳລັງຮ້ອນຟົດແດ່ ໃຫ້ໝາກັດກິນຈົນເຫຼືອແຕ່ກະດູກແດ່ ໃຫ້ນອນເທິງຫຼາວທັງເປັນແດ່ ຕັດຫົວອອກດ້ວຍດາບແດ່

ໃນຂະນະທີ່ເຫັນນັ້ນ ບັນດິດຈະມີຄວາມຮູ້ສຶກແບບນີ້ວ່າ “ຍ້ອນເຫດແຫ່ງບາບກຳຢ່າງໃດ ພຣະຣາຊາທັງຫຼາຍ ຈຶ່ງຮັບສັ່ງໃຫ້ຈັບໂຈນຜູ້ປະພຶດຜິດມາແລ້ວ ລົງອາຍາດ້ວຍປະການຕ່າງ ໆ ຄື ໃຫ້ຂ້ຽນດ້ວຍແສ້ແດ່ ໃຫ້ຂ້ຽນດ້ວຍຫວາຍແດ່ ໃຫ້ຕີດ້ວຍໄມ້ຄ້ອນແດ່ ຕັດມືແດ່ ຕັດຕີນແດ່ ຕັດທັງມືແລະຕີນແດ່ ຕັດໃບຫູແດ່ ຕັດດັງແດ່ ຕັດທັງໃບຫູແລະດັງແດ່ ວາງກ້ອນເຫຼັກແດງເທິງຫົວແດ່ ລອກໜັງຫົວແລ້ວຂັດໃຫ້ຂາວເໝືອນສັງແດ່ ເອົາໄຟຍັດປາກຈົນເລືອດໄຫຼເໝືອນປາກຣາຫູແດ່ ເອົາຜ້າພັນໂຕຣົດນ້ຳມັນແລ້ວໄຟເຜົາເຜົາແດ່ ພັນມືແລ້ວໄຟເຜົາຕາງຄົບໄຟແດ່ ລອກໜັງຕັ້ງແຕ່ຄໍເຖິງຂໍ້ຕີນໃຫ້ລຸກຍ່າງຢຽບໜັງຈົນລົ້ມລົງແດ່ ລອກໜັງຕັ້ງແຕ່ຄໍເຖິງແອວ ເຮັດໃຫ້ແນມເບິ່ງຄືວ່ານຸ່ງຜ້າຄາກອງແດ່ ໃສ່ປອກເຫຼັກທີ່ແຂນສອກແລະເຂົ່າແລ້ວສຽບຫລາວທັງ ໔ ທິດເອົາໄຟເຜົາແດ່ ໃຊ້ເບັດກ່ຽວໜັງ ຊີ້ນ ເອັນອອກມາແດ່ ປາດຊີ້ນອອກເປັນແວ່ນ ໆ ເໝືອນຫລຽນກະສາບແດ່ ປາດໜັງ ຊີ້ນ ເອັນ ອອກເຫຼືອໄວ້ແຕ່ກະດູກແດ່ ໃຊ້ຫຼາວແທງຮູຫູໃຫ້ຊອດເຖິງກັນແດ່ ສຽບໃຫ້ຕິດດິນແລ້ວຈັບເຂົາປິ່ນໄດ້ຮອບແດ່ ທຸບກະດູກໃຫ້ແຫຼກແລ້ວລອກໜັງອອກເຫຼືອໄວ້ແຕ່ກອງຊີ້ນເໝືອນຕັ່ງໃບໄມ້ແດ່ ຣົດໂຕດ້ວຍນ້ຳມັນທີ່ກຳລັງຮ້ອນຟົດແດ່ ໃຫ້ໝາກັດກິນຈົນເຫຼືອແຕ່ກະດູກແດ່ ໃຫ້ນອນເທິງຫຼາວທັງເປັນແດ່ ຕັດຫົວອອກດ້ວຍດາບແດ່ ກຳທຳເຫຼົ່ານັ້ນບໍ່ມີໃນເຮົາ ແລະ ເຮົາກໍບໍ່ຜາກົດໃນທຳເຫຼົ່ານັ້ນ

ພິກຂຸທັງຫຼາຍ ບັນດິດຍ່ອມສະເຫວີຍສຸກໂສມະນັດປະການທີ ໘ ນີ້ໃນປັດຈຸບັນ

[໘໕໔] ອີກປະການໜຶ່ງ ໃນສະໄໝນັ້ນ ກຳດີທີ່ບັນດິດເຮັດ ຄື ການປະພຶດກາຍສຸດຈະຣິດ ການປະພຶດວະຈີສຸຈະຣິດ ການປະພຶດມະໂນສຸດຈະຣິດໄວ້ໃນການກ່ອນ ຍ່ອມຄຸ້ມຄອງປ້ອງກັນບັນດິດຜູ້ຢູ່ເທິງຕັ່ງ ເທິງຕຽງ ຫຼື ນອນເທິງພື້ນ

ປຽບຄື ເງົາຂອງຈອມພູໃຫຍ່ ຍ່ອມບົດບັງ ຄອບຄຸມແຜ່ນດິນໃຫຍ່ໃນເວລາຄ່ຳ ແມ່ນສັນໃດ ກຳດີທີ່ບັນດິດເຮັດ ຄື ການປະພຶດກາຍສຸດຈະຣິດ ການປະພຶດວະຈີສຸຈະຣິດ ການປະພຶດມະໂນສຸດຈະຣິດໄວ້ໃນການກ່ອນ ກໍຄືກັນສັນນັ້ນ ຍ່ອມຄຸ້ມຄອງ ປ້ອງກັນບັນດິດຜູ້ຢູ່ເທິງຕັ່ງ ເທິງຕຽງ ຫຼື ນອນເທິງພື້ນດິນໃນສະໄໝນັ້ນ

ໃນເລື້ອງນັ້ນ ບັນດິດມີຄວາມຄິດແບບນີ້ວ່າ “ເຮົາບໍ່ໄດ້ທຳຄວາມຊົ່ວໄວ້ນໍ ບໍ່ໄດ້ເຮັດກຳຫຍາບຊ້າໄວ້ ບໍ່ໄດ້ເຮັດກຳເສົ້າໝອງໄວ້ ເຮົາເຮັດແຕ່ຄວາມດີ ເຮັດແຕ່ກຸສົນ ເຮັດແຕ່ທີ່ປ້ອງກັນສິ່ງເປັນຕາຢ້ານໄວ້ ເຮົາຕາຍແລ້ວຈະໄປສູ່ຄະຕິຂອງຜູ້ບໍ່ໄດ້ທຳຄວາມຊົ່ວໄວ້ ບໍ່ໄດ້ເຮັດກຳຫຍາບຊ້າໄວ້ ບໍ່ໄດ້ເຮັດກຳເສົ້າໝອງໄວ້ ເຮັດແຕ່ຄວາມດີ ເຮັດແຕ່ກຸສົນ ເຮັດແຕ່ທີ່ປ້ອງກັນສິ່ງເປັນຕາຢ້ານໄວ້” ເຂົາຍ່ອມບໍ່ເສົ້າໂສກ ບໍ່ລຳບາກໃຈ ບໍ່ຮ່ຳໄຮ ບໍ່ຕີເອິກ ໄຫ້ຈົ່ມ ບໍ່ເຖິງຄວາມຫຼົງໄຫຼ

ພິກຂຸທັງຫຼາຍ ບັນດິດຍ່ອມສະເຫວີຍສຸກໂສມະນັດປະການທີ ໙ ນີ້ໃນປັດຈຸບັນ

ພິກຂຸທັງຫຼາຍ ບັນດິດນັ້ນ ຍັງປະພຶດກາຍສຸດຈະຣິດ ປະພຶດວະຈີສຸຈະຣິດ ປະພຶດມະໂນສຸດຈະຣິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸຄະຕິໂລກສະຫວັນ ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງສະຫວັນນັ້ນແລວ່າ "ເປັນສະຖານທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ໂດຍສ່ວນດຽວ" ພິກຂຸທັງຫຼາຍ ແມ່ນການປຽບທຽບວ່າ ສະຫວັນເປັນສຸກກໍບໍ່ແມ່ນເຮັດໄດ້ງ່າຍ"

[໔໕໖] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຊົງອຸປະມາໄດ້ອີກບໍ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໄດ້ ພິກຂຸ" ແລ້ວຕັດວ່າ "ປຽບຄື ພຣະເຈົ້າຈັກກະພັດຊົງເປັນຜູ້ສົມບູນດ້ວຍແກ້ວ ໗ ປະການ ແລະລິດ (ຄວາມສຳເລັດ) ໔ ປະການ

ຍ້ອນຄວາມສົມບູນດ້ວຍແກ້ວ ໗ ປະການ ແລະລິດ ໔ ປະການນັ້ນ ເປັນເຫດ ພຣະເຈົ້າຈັກກະພັດນັ້ນຈຶ່ງສະເຫວີຍສຸກໂສມະນັດ

ພຣະເຈົ້າຈັກກະພັດຊົງເປັນຜູ້ສົມບູນດ້ວຍແກ້ວ ໗ ປະການ ເປັນແນວໃດ?

ຄື ກົງຈັກແກ້ວອັນເປັນທິບມີກຳ ໑,໐໐໐ ດີ້ວ ມີກົງ ມີດຸມ ແລະ ສ່ວນປະກອບຄົບທຸກແນວ ຍ່ອມຜາກົດແກ່ກະສັດຕາທິຣາດໃນໂລກນີ້ ຜູ້ຊົງໄດ້ຮັບມຸດທາພິເສກແລ້ວ ຊົງສົງນ້ຳພຣະສຽນ ໃນມື້ອຸໂປສົດ ໑໕ ຄ່ຳ ຖືຮັກສາອຸໂປສົດ ປະທັບຢູ່ຊັ້ນເທິງຜາສາດຫຼັງງາມ ກະສັດຕາທິຣາດຜູ້ຊົງໄດ້ຮັບມຸດທາພິເສກແລ້ວ ເມື່ອທອດພຣະເນດແລ້ວໄດ້ມີພຣະຣາຊະດຳຣິວ່າ "ເຮົາໄດ້ຟັງເລື້ອງນີ້ມາວ່າ "ກົງຈັກແກ້ວອັນເປັນທິບມີກຳ ໑,໐໐໐ ດີ້ວ ມີກົງ ມີດຸມ ແລະ ສ່ວນປະກອບຄົບທຸກແນວ ຍ່ອມຜາກົດແກ່ກະສັດຕາທິຣາດພຣະອົງໃດ ຜູ້ຊົງໄດ້ຮັບມຸດທາພິເສກແລ້ວ ຊົງນ້ຳພຣະສຽນ ໃນມື້ອຸໂປສົດ ໑໕ ຄ່ຳ ຖືຮັກສາອຸໂປສົດ ປະທັບຢູ່ຊັ້ນເທິງຜາສາດຫຼັງງາມ ກະສັດຕາທິຣາດພຣະອົງນັ້ນຍ່ອມເປັນພຣະເຈົ້າຈັກກະພັດ" ເຮົາເປັນພຣະເຈົ້າຈັກກະພັດແລ້ວຕີ"

ລຳດັບນັ້ນ ກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວ ຊົງລຸກຈາກທີ່ປະທັບ ພຣະຫັດເບື້ອງຊ້າຍ ຊົງຈັບພຣະພິງຄານ (ພຣະນ້ຳເຕົ້າ) ພຣະຫັດເບື້ອງຂວາຊົງຊູກົງຈັກແກ້ວ ຂື້ນຕັດວ່າ "ກົງຈັກແກ້ວອັນປະເສີດຈົ່ງປິ່ນໄປ ຈົ່ງໄດ້ໄຊຊະນະອັນຍິ່ງໃຫຍ່" ທັນໃດນັ້ນກົງຈັກແກ້ວນັ້ນກໍປິ່ນໄປທາງທິດຕາເວັນອອກ ພຣະເຈົ້າຈັກກະພັດພ້ອມດ້ວຍຈະຕຸຣົງຄິນີເສນາ ກໍສະເດັດຕາມໄປສະເດັດເຂົ້າພັກແຮມພ້ອມດ້ວຍຈະຕຸຣົງຄິນີເສນາໃນປະເທດທີ່ກົງຈັກແກ້ວຢຸດຢູ່ ພຣະຣາຊາທັງຫຼາຍທີ່ເປັນປໍລະປັກໃນທິດຕາເວັນອອກພາກັນສະເດັດມາເຝົ້າ ແລ້ວຂາບທູນແນວນີ້ວ່າ "ຂໍເດຊະ ມະຫາຣາດເຈົ້າ ພຣະອົງໂຜດສະເດັດມາເທີ້ນ ຂ້ານ້ອຍ ຂໍຕອນຮັບສະເດັດພຣະອົງຣາດຊະສົມບັດຂອງຂ້ານ້ອຍເປັນຂອງພຣະອົງ ໂຜດປະທານພຣະຣາໂຊວາທະດ້ວຍເທີ້ນ ໂດຍຂ້ານ້ອຍ"

ພຣະເຈົ້າຈັກກະພັດຮັບສັ່ງແບບນີ້ວ່າ "ທ່ານທັງຫຼາຍບໍ່ເພິ່ງຂ້າສັດ ບໍ່ເພິ່ງລັກຊັບ ບໍ່ເພິ່ງປະພຶດຜິດໃນກາມ ບໍ່ເພິ່ງເວົ້າຕົວະ ບໍ່ເພິ່ງດື່ມນ້ຳເມົາ ແລະ ທ່ານທັງຫຼາຍຈົ່ງຄອງຣາດຊະສົມບັດໄປຄືເກົ່າເທີ້ນ" ພຣະຣາຊາທັງຫຼາຍ ທີ່ເປັນປໍລະປັກໃນທິດຕາເວັນອອກເຫຼົ່ານັ້ນ ໄດ້ກາຍເປັນຜູ້ສະໜັບສະໜູນພຣະເຈົ້າຈັກກະພັດແລ້ວ

[໔໕໗] ພິກຂຸທັງຫຼາຍ ຈາກນັ້ນ ກົງຈັກແກ້ວກໍປິ່ນໄປຮອດມະຫາສະມຸດດ້ານທິດຕາເວັນອອກ ແລ້ວປິ່ນກັບໄປດ້ານທິດໃຕ້ ຯລຯ ປິ່ນໄປຮອດມະຫາສະມຸດດ້ານທິດໃຕ້ ແລ້ວປິ່ນກັບໄປດ້ານທິດຕາເວັນຕົກ ຯລຯ ປິ່ນໄປຮອດມະຫາສະມຸດດ້ານທິດຕາເວັນຕົກ ແລ້ວປິ່ນກັບໄປດ້ານທິດເໜືອ ສະເດັດເຂົ້າພັກແຮມພ້ອມດ້ວຍຈະຕຸຣົງຄີນີເສນາ ໃນປະເທດທີ່ກົງຈັກແກ້ວຢຸດຢູ່

ພຣະຣາຊາທັງຫຼາຍ ທີ່ເປັນປໍລະປັກໃນທິດເໜືອພາກັນສະເດັດມາເຝົ້າ ແລ້ວຂາບທູນແບບນີ້ວ່າ "ຂໍເດຊະ ມະຫາຣາດເຈົ້າ ພຣະອົງໂຜດສະເດັດມາເທີ້ນ ຂ້ານ້ອຍສະເດັດ ຣາດຊະສົມບັດ ຂອງຂ້ານ້ອຍເປັນຂອງພຣະອົງ ໂຜດປະທານພຣະຣາໂຊວາທະເທີ້ນ ໂດຍຂ້ານ້ອຍ"

ພຣະເຈົ້າຈັກກະພັດຮັບສັ່ງແບບນີ້ວ່າ "ທ່ານທັງຫຼາຍບໍ່ເພິ່ງຂ້າສັດ ບໍ່ເພິ່ງລັກຊັບ ບໍ່ເພິ່ງປະພຶດຜິດໃນກາມ ບໍ່ເພິ່ງເວົ້າຕົວະ ບໍ່ເພິ່ງດື່ມນ້ຳເມົາ ແລະ ທ່ານທັງຫຼາຍຈົ່ງປົກຄອງບ້ານເມືອງໄປຄືເກົ່າເທີ້ນ" ພຣະຣາຊາທັງຫຼາຍທີ່ເປັນປໍລະປັກໃນທິດເໜືອເຫຼົ່ານັ້ນ ໄດ້ກາຍເປັນຜູ້ສະໜັບສະໜູນພຣະເຈົ້າຈັກກະພັດແລ້ວ

໑. ຄັ້ງນັ້ນ ຈັກແກ້ວນັ້ນໄດ້ປາບປາມແຜ່ນດິນ ມີມະຫາສະມຸດເປັນຂອບເຂດແນວຮາບຄາບ ສຳເລັດແລ້ວໝຸນກັບຣາຊະທານີນັ້ນ ປະດິດສະຖານຢູ່ເໝືອນຫຼິ້ມໄລທີ່ພຣະທະວາຣະພາຍໃນພະຣາດຊະວັງຂອງພຣະເຈົ້າຈັກກະພັດ ເຮັດພຣະທະວາຣະພາຍໃນພະຣາດຊະວັງຂອງພຣະເຈົ້າຈັກກະພັດໃຫ້ສະຫວ່າງສະໄຫວ ພິກຂຸທັງຫຼາຍ ຈັກແກ້ວປານນີ້ ຜາກົດແກ່ພຣະເຈົ້າຈັກກະພັດ

[໔໕໘] ໔. ອີກປະການໜຶ່ງ ຊ້າງແກ້ວ ເຊິ່ງເປັນຊ້າງເຜືອກ ເປັນທີ່ເພິ່ງຂອງເຫຼົ່າສັດ ມີລິດ ເຫາະໄປໃນອາກາສໄດ້ ເປັນພະຍາຊ້າງຕະກູນອຸໂປສົດ ຍ່ອມຜາກົດແກ່ພຣະເຈົ້າຈັກກະພັດ ພຣະເຈົ້າຈັກກະພັດເມື່ອທອດພຣະເນດ ເຫັນຊ້າງນັ້ນ ຈຶ່ງມີພຣະທະໄທໂຜດປານວ່າ "ທ່ານຜູ້ຈະເລີນ ພາຫະນະຄືຊ້າງນີ້ຖ້າໄດ້ນຳໄປເຝິກ ກໍຈະເປັນສັດທີ່ເປັນມຸງຄຸນແນ່ແທ້" ຈາກນັ້ນຊ້າງແກ້ວນັ້ນ ຈຶ່ງໄດ້ຮັບການເຝິກຫັດເໝືອນຊ້າງອາຊາໄນໂຕຈະເລີນ ເຊິ່ງໄດ້ຮັບການເຝິກຫັດດີແລ້ວຕະຫຼອດການລະນານ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາວ່າ ພຣະເຈົ້າຈັກກະພັດເມື່ອຈະ ຊົງທົດສອບຊ້າງແກ້ວນັ້ນຈຶ່ງສະເດັດຂຶ້ນຊົງໃນເວລາເຊົ້າ ແລ້ວສະເດັດລຽບໄປຕະຫຼອດແຜ່ນດິນອັນມີມະຫາສະມຸດເປັນ

ຂອບເຂດ ແລ້ວສະເດັດກັບມາຣາດຊະທານີນັ້ນດັ່ງເດີມ ທັນສະເຫວີຍພຣະກະຍາຫານເຊົ້າ ຊ້າງແກ້ວປານນີ້ຜາກົດແກ່ພຣະເຈົ້າຈັກກະພັດ

໓. ອີກປະການໜຶ່ງ ມ້າແກ້ວ ເຊິ່ງເປັນມ້າຂາວ ຫົວດໍາ ມີຂົນປີກ ຄື ຫຍ້າປ້ອງ ມີລິດເຫາະໄປໃນອາກາດໄດ້ ຊື່ພະຍາມ້າວາລາຫົກ ຍ່ອມຜາກົດແກ່ພຣະເຈົ້າຈັກກະພັດ ພຣະເຈົ້າຈັກກະພັດເມື່ອທອດພຣະເນດເຫັນມ້າແກ້ວນັ້ນ ຈຶ່ງມີພຣະຫະໄທໂສດປານວ່າ “ທ່ານຜູ້ຈະເລີນພາຫະນະຄືມ້ານີ້ຖ້າໄດ້ນໍາໄປເຝິກກໍຈະເປັນສັດທີ່ເປັນມຸງຄຸນແນ່ແທ້” ຈາກນັ້ນ ມ້າແກ້ວນັ້ນຈຶ່ງໄດ້ຮັບການເຝິກຫັດເໝືອນມ້າອາຊາໄນໂຕຈະເລີນ ເຊິ່ງໄດ້ຮັບການເຝິກຫັດດີແລ້ວຕະຫຼອດການລະນານ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາວ່າ ພຣະເຈົ້າຈັກກະພັດເມື່ອຈະ ຊົງທົດສອບມ້າແກ້ວນັ້ນຈຶ່ງສະເດັດຂຶ້ນຊົງໃນເວລາເຊົ້າ ແລ້ວສະເດັດລຽບໄປຕະຫຼອດແຜ່ນດິນອັນມີມະຫາສະມຸດເປັນຂອບເຂດ ແລ້ວສະເດັດກັບມາຣາຊະທານີນັ້ນດັງເດີມ ທັນສະເຫວີຍພຣະກະຍາຫານເຊົ້າ ມ້າແກ້ວປານນີ້ຜາກົດແກ່ພຣະເຈົ້າຈັກກະພັດ

໔. ອີກປະການໜຶ່ງ ມະນີແກ້ວຜາກົດແກ່ພຣະເຈົ້າຈັກກະພັດ ຄືມະນີແກ້ວນັ້ນເປັນແກ້ວໄພທູນ ງາມບໍລິສຸດຕາມທໍາມະຊາດ ສຸກໃສເປັນປະກາຍໄດ້ສັດສ່ວນ ມີແປດຫລ່ຽມ ເຈຍຣະໄນໄວ້ດີແລ້ວ ຣັດສະໝີແຫ່ງມະນີແກ້ວນັ້ນແຜ່ຊ່ານອອກໄປຮອບ ໆ ປະມານ ໑ ໂຍດ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາວ່າ ພຣະເຈົ້າຈັກກະພັດ ເມື່ອຈະຊົງທົດສອບມະນີແກ້ວນັ້ນຊົງໃຫ້ໝູ່ດຕຸຣົງຄິນີເສນາມັດສອດເກາະແລ້ວ ຊົງຍົກມະນີແກ້ວນັ້ນເປັນຍອດທົງ ສະເດັດໄປປະທັບຢືນໃນບ່ອນມືດຍາມຣາຕີ ຍ້ອນແສງສະຫວ່າງນັ້ນ ຊາວບ້ານທີ່ອາໄສຢູ່ໂດຍຮອບສໍາຄັນວ່າເປັນເວລາກາງເວັນ ຈຶ່ງພາກັນປະກອບການງານ ມະນີແກ້ວປານນີ້ຜາກົດແກ່ພຣະເຈົ້າຈັກກະພັດ

໕. ອີກປະການໜຶ່ງ ນາງແກ້ວຜາກົດແກ່ພຣະເຈົ້າຈັກກະພັດ ຄືນາງແກ້ວນັ້ນ ເປັນສະຕີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີຜິວພັນຜຸດຜ່ອງຍິ່ງ ບໍ່ສູງເກີນໄປ ບໍ່ເຕ້ຍເກີນໄປ ບໍ່ຜອມເກີນໄປ ບໍ່ອ້ວນເກີນໄປ ບໍ່ດໍາເກີນໄປ ບໍ່ຂາວເກີນໄປ ງົດງາມເກີນຜິວພັນຂອງຍິງມະນຸດ ແຕ່ບໍ່ເຖິງຜິວພັນທິບ ກາຍຂອງນາງແກ້ວນັ້ນມີສໍາຜັດອ່ອນນຸ່ມຄືປຸຍນຸ່ນຫຼືປຸຍຝ້າຍ ມີຮ່າງກາຍອົບອຸ່ນໃນລະດູໜາວ ເຢັນໃນລະດູຮ້ອນ ມີກິ່ນຈັນຫອມຟຸ້ງອອກຈາກກາຍ ກິ່ນດອກບົວຟຸ້ງອອກຈາກປາກຂອງນາງ ນາງແກ້ວນັ້ນມີປົກກະຕິຕື່ນກ່ອນນອນພາຍຫຼັງ ຖ້າຟັງວ່າຈະຮັບສັ່ງໃຫ້ເຮັດຫຍັງປະພຶດຕ້ອງພຣະຫະໄທ ທູນແຕ່ຄໍາມ່ວນຕໍ່ພຣະເຈົ້າຈັກກະພັດ ແລະ ນາງແກ້ວນັ້ນຈະບໍ່ປະພຶດນອກພຣະຫະໄທພຣະເຈົ້າຈັກກະພັດ ເປັນຫຍັງນໍ ຈະປະພຶດລ່ວງເກີນທາງກາຍໄດ້ ນາງແກ້ວປານນີ້ຜາກົດແກ່ພຣະເຈົ້າຈັກກະພັດ

໖. ອີກປະການໜຶ່ງ ຄະຫະບໍດີແກ້ວຜາກົດແກ່ພຣະເຈົ້າຈັກກະພັດ ຄື ຄະຫະບໍດີແກ້ວນັ້ນເປັນຜູ້ມີຕາທິບ ອັນເກີດແຕ່ຜົນກຳ ເຊິ່ງສາມາດເຫັນຂຸມຊັບທັງທີ່ມີເຈົ້າຂອງ ແລະ ບໍ່ມີເຈົ້າຂອງເຂົາເຂົ້າເຝົ້າພຣະເຈົ້າຈັກກະພັດແລ້ວຂາບທູນແນວນີ້ວ່າ "ຂໍເດຊະ ຂໍພຣະອົງໂຜດຊົງເປັນຜູ້ຂວນຂວາຍນ້ອຍເທີ້ນ ຂ້າພຣະອົງຈັກເຮັດໜ້າທີ່ການຄັງໃຫ້ພຣະອົງ"

ພິກຂຸທັງຫຼາຍ ເລື້ອງເຄີຍມີມາວ່າ ພຣະເຈົ້າຈັກກະພັດເມື່ອຈະຊົງທົດສອບຄະຫະບໍດີແກ້ວນັ້ນ ຈຶ່ງສະເດັດລົງເຮືອລັດກະແສນ້ຳໄປກາງແມ່ນ້ຳຄົງຄາ ແລ້ວໄດ້ຮັບສັ່ງກັບຄະຫະບໍດີແກ້ວວ່າ "ຄະຫະບໍດີ ເຮົາຕ້ອງການເງິນແລະຄຳ" ຄະຫະບໍດີແກ້ວຈຶ່ງຂາບທູນວ່າ "ຂ້າແດ່ ມະຫາຣາດ ຖ້າເຊັ່ນນັ້ນ ໂຜດໃຫ້ທຽບເຮືອເຂົ້າຝັ່ງຂ້າງໜຶ່ງເທີ້ນ" ພຣະເຈົ້າຈັກກະພັດ ຕັດວ່າ

"ຄະຫະບໍດີ ເຮົາຕ້ອງການເງິນແລະຄຳກົງນີ້" ທັນໃດນັ້ນ ຄະຫະບໍດີແກ້ວນັ້ນຈຶ່ງເອົາມືທັງສອງຈຸ່ມລົງໃນນ້ຳ ຍົກໝໍ້ທີ່ເຕັມດ້ວຍເງິນແລະຄຳຂຶ້ນມາ ແລ້ວຂາບທູນພຣະເຈົ້າຈັກກະພັດວ່າ "ທໍ່ນີ້ພໍແລ້ວບໍ? ມະຫາຣາດ ທໍ່ນີ້ໃຊ້ໄດ້ພໍແລ້ວບໍ? ມະຫາຣາດ ທໍ່ນີ້ພໍບູຊາແລ້ວພໍແລ້ວບໍ? ມະຫາຣາດ" ພຣະເຈົ້າຈັກກະພັດຈຶ່ງຕັດແນວນີ້ວ່າ "ຄະຫະບໍດີ ທໍ່ນີ້ພໍແລ້ວ ທໍ່ນີ້ໃຊ້ໄດ້ແລ້ວ ທໍ່ນີ້ຊື່ວ່າບູຊາແລ້ວ" ຄະຫະບໍດີແກ້ວປານນີ້ຜາກົດແກ່ພຣະເຈົ້າຈັກກະພັດ

໗. ອີກປະການໜຶ່ງ ປະຣິນາຍົກແກ້ວຜາກົດແກ່ພຣະເຈົ້າຈັກກະພັດ ຄືປະຣິນາຍົກແກ້ວນັ້ນເປັນບັນດິດ ມີປັນຍາສາມາດຖວາຍຂໍ້ແນະນຳໃຫ້ພຣະເຈົ້າຈັກກະພັດ ຊົງບຳລຸງຜູ້ທີ່ຄວນບຳລຸງຖອດຖອນຜູ້ທີ່ຄວນຖອດຖອນ ຊົງແຕ່ງຕັ້ງຜູ້ທີ່ຄວນແຕ່ງຕັ້ງ ເຂົ້າເຝົ້າພຣະເຈົ້າຈັກກະພັດແລ້ວຂາບທູນແນວນີ້ວ່າ "ຂໍເດຊະ ຂໍພຣະອົງໂຜດຊົງເປັນຜູ້ຂວນຂວາຍໜ້ອຍເທີ້ນ ຂ້າພຣະອົງຈັກຖວາຍຄຳປຶກສາ" ປະຣິນາຍົກແກ້ວປານນີ້ຜາກົດແກ່ພຣະເຈົ້າຈັກກະພັດ

ພິກຂຸທັງຫຼາຍ ພຣະເຈົ້າຈັກກະພັດຊົງເປັນຜູ້ສົມບູນດ້ວຍແກ້ວ ໗ ປະການນີ້

[໒໕໗] ພຣະເຈົ້າຈັກກະພັດຊົງເປັນຜູ້ສົມບູນດ້ວຍລິດ ໔ ປະການ ເປັນແນວໃດ?

ຄື ພຣະເຈົ້າຈັກກະພັດໃນໂລກນີ້ ມີພຣະຮູບງົດງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີພຣະຜິວກາຍຜຸດຜ່ອງຍິ່ງເກີນກວ່າມະນຸດເຫຼົ່າອື່ນ ພຣະເຈົ້າຈັກກະພັດຊົງເປັນຜູ້ສົມບູນດ້ວຍລິດ ນີ້ເປັນປະການທີ່ ໑

ອີກປະການໜຶ່ງ ພຣະເຈົ້າຈັກກະພັດມີພຣະຊົນມາຍຸຍືນ ຊົງດຳລົງຢູ່ໃນຣາດຊະສົມບັດດົນເກີນກວ່າມະນຸດເຫຼົ່າອື່ນ ພຣະເຈົ້າຈັກກະພັດຊົງເປັນຜູ້ສົມບູນດ້ວຍລິດ ນີ້ເປັນປະການທີ ໔

ອີກປະການໜຶ່ງ ພຣະເຈົ້າຈັກກະພັດມີພຣະໂຣຄາພາດໜ້ອຍ ມີພະຍາດເບົາບາງ ປະກອບດ້ວຍໄຟທາດສຳລັບຍ່ອຍອາຫານສະໝ່ຳສະເໝີ ບໍ່ເຢັນໂພດ ບໍ່ຮ້ອນໂພດ ເກີນກວ່າມະນຸດ

ເຫຼົ່າອື່ນ ພຣະເຈົ້າຈັກກະພັດຊົງເປັນຜູ້ສົມບູນດ້ວຍລິດ ນີ້ເປັນປະການທີ ໓

ອີກປະການໜຶ່ງ ພຣະເຈົ້າຈັກກະພັດຊົງເປັນທີ່ຮັກ ເປັນທີ່ພໍໃຈ ຂອງພາມແລະຄະຫະບໍດີທັງຫຼາຍ ປຽບຄື ບິດາເປັນທີ່ຮັກເປັນທີ່ພໍໃຈຂອງບຸດ

ແມ່ນສັນໃດ ພຣະຈັກກະພັດກໍຄືກັນສັນນັ້ນ ຊົງເປັນທີ່ຮັກ ເປັນທີ່ພໍໃຈຂອງພາມແລະຄະຫະບໍດີທັງຫຼາຍ

ອັນໜຶ່ງ ພາມແລະຄະຫະບໍດີທັງຫຼາຍເປັນທີ່ໂປດປານ ເປັນທີ່ພໍພຣະຫະໄທແມ່ນຂອງພຣະເຈົ້າຈັກກະພັດ ປຽບຄື ບຸດເປັນທີ່ຮັກ ເປັນທີ່ພໍໃຈຂອງບິດາ ແມ່ນສັນໃດ ພາມແລະຄະຫະບໍດີທັງຫຼາຍກໍຄືກັນສັນນັ້ນ ກໍເປັນທີ່ໂປດປານ ເປັນທີ່ພໍພຣະຫະໄທແມ່ນຂອງພຣະເຈົ້າຈັກກະພັດ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາວ່າ ພຣະເຈົ້າຈັກກະພັດພ້ອມດ້ວຍຈະຕຸຣົງຄິນີເສນາສະເດັດປະພາດພຣະຣາຊະອຸທະຍານ ຄັ້ງນັ້ນ ພາມແລະຄະຫະບໍດີພາກັນເຂົ້າເຝົ້າພຣະເຈົ້າຈັກກະພັດ ແລ້ວຂາບທູນແນວນີ້ວ່າ “ຂໍເດຊະ ມະຫາຣາດເຈົ້າ ຂໍພຣະອົງຢ່າຟ້າວສະເດັດໄປ ໂຜດສະເດັດໂດຍອາການທີ່ຂ້າພຣະອົງທັງຫຼາຍ ໄດ້ຊົມພຣະບາຣະມີດົນ ໆ ດ້ວຍເທີ້ນ”

ແມ່ນພຣະເຈົ້າຈັກກະພັດໄດ້ຮັບສັ່ງຮຽກນາຍສາຣະຖີມາດ້ວຍຕັດວ່າ “ດູຣາ ທ້າວສາຣະຖີທ່ານຈົ່ງຄ່ອຍ ໆ ຂັບໄປໂດຍອາການທີ່ເຮົາຈະເພິ່ງຍ້ຽມພາມ ແລະ ຄະຫະບໍດີໄດ້ດົນ ໆ ເທີ້ນ” ພຣະເຈົ້າຈັກກະພັດຊົງເປັນຜູ້ສົມບູນດ້ວຍລິດ ນີ້ເປັນປະການທີ່ ໔

ພິກຂຸທັງຫຼາຍ ພຣະເຈົ້າຈັກກະພັດຊົງເປັນຜູ້ສົມບູນດ້ວຍລິດ ໔ ປະການນີ້

ທ່ານທັງຫຼາຍ ເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ?

ຄື ພຣະເຈົ້າຈັກກະພັດຊົງເປັນຜູ້ສົມບູນດ້ວຍແກ້ວ ໗ ປະການ ແລະ ລິດ ໔ ປະການນີ້ເພິ່ງສະເຫວີຍສຸກໂສມະນັດອັນມີຄວາມສົມບູນດ້ວຍແກ້ວ ໗ ປະການ ແລະ ລິດ ໔ ປະການນັ້ນເປັນເຫດແດ່ບໍ?”

ພິກຂຸເຫຼົ່ານັ້ນ ຂາບທູນວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ພຣະເຈົ້າຈັກກະພັດຊົງເປັນຜູ້ສົມບູນດ້ວຍແກ້ວແມ່ນປະການດຽວ ຍັງສະເຫວີຍສຸກໂສມະນັດທີ່ເກີດຍ້ອນແກ້ວແມ່ນປະການດຽວນັ້ນເປັນເຫດໄດ້ ບໍ່ຈຳເປັນຕ້ອງກ່າວເຖິງແກ້ວ ໗ ປະການ ແລະ ລິດ ໔ ປະການເລີຍ ຂ້ານ້ອຍ”

[໔໙໐] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຈັບກ້ອນຫີນຂະໜາດພໍປະມານ ທໍ່ຝ່າພຣະ

ຫັດຂຶ້ນມາແລ້ວຕັດຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າ ແນວໃດ ຄື ກ້ອນຫີນຂະໜາດພໍປະມານ ທໍ່ຝາມືທີ່ເຮົາຖືຢູ່ນີ້ກັບພູຫຼວງຫິມະພານ ແນວໃດໃຫຍ່ກວ່າກັນ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ກ້ອນຫີນຂະໜາດພໍປະມານ ທໍ່ຝາພຣະຫັດທີ່ພຣະອົງຊົງຖືຢູ່ນີ້ ມີປະມານໜ້ອຍແທ້ ປຽບທຽບກັບພູຫຼວງຫິມະພານແລ້ວ ບໍ່ເຖິງການນັບ ບໍ່ເຖິງແມ່ນສ່ວນແຫ່ງສ້ຽວ ບໍ່ເຖິງແມ່ນການທຽບກັນໄດ້ເລີຍ ຂ້ານ້ອຍ"

"ພິກຂຸທັງຫຼາຍ ຄືກັນສັນນັ້ນ ສຸກໂສມະນັດທີ່ພຣະເຈົ້າຈັກກະພັດຊົງເປັນຜູ້ສົມບູນດ້ວຍແກ້ວ ໗ ປະການ ແລະລິດ ໔ ປະການ ຊົງສະເຫວີຍສຸກໂສມະນັດອັນມີຄວາມສົມບູນດ້ວຍແກ້ວ ໗ ປະການແລະລິດ ໔ ປະການນັ້ນເປັນເຫດ ປຽບທຽບ ກັບສຸກທີ່ເປັນທິບແລ້ວ ບໍ່ເຖິງການນັບ ບໍ່ເຖິງແມ່ນສ່ວນແຫ່ງສ້ຽວ ບໍ່ເຖິງແມ່ນການທຽບກັນໄດ້ເລີຍ

ບັນດິດນັ້ນ ຍ້ອນເວລາລ່ວງເລີຍມາດົນ ໃນລາງເທື່ອລາງເວລາຖ້າມາເກີດເປັນມະນຸດ ກໍຈະເກີດໃນຕະກູນສູງ ຄື ຕະກູນຂັດຕິຍະມະຫາສານ ຕະກູນພາມມະນະມະຫາສານ ຫຼື ຕະກູນຄະຫະບໍດີມະຫາສານ ເຫັນປານນັ້ນ ອັນເປັນຕະກູນຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ມີຄໍາແລະເງິນຫຼາຍ ມີເຄື່ອງໃຊ້ທີ່ໜ້າພໍໃຈຫຼາຍ ມີຊັບແລະທັນຍະຊາດຫຼາຍ ແລະ ບັນດິດນັ້ນເປັນຜູ້ມີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີຜິວພັນຜຸດຜ່ອງຍິ່ງ ມີປົກກະຕິໄດ້ເຂົ້າ ນໍ້າ ຜ້າ ຍານ ດອກໄມ້ຂອງຫອມ ເຄື່ອງລູບໄລ້ ທີ່ນອນ ທີ່ພັກ ແລະ ເຄື່ອງ ປະທີບ ເຂົາຈຶ່ງປະພຶດກາຍສຸດຈະຣິດວະຈີສຸຈະຣິດ ມະໂນສຸດຈະຣິດ ຫຼັງຈາກຕາຍແລ້ວ ຈຶ່ງໄປເກີດໃນສຸຄະຕິໂລກສະຫວັນ

ພິກຂຸທັງຫຼາຍ ປຽບຄືນັກເລງການພະນັນ ໄດ້ຮັບໂພຄະສົມບັດຫຼວງຫຼາຍ ຄວາມຊະນະຂອງນັກເລງການພະນັນຜູ້ໄດ້ຮັບໂພຄະສົມບັດຫຼາຍ ຍ້ອນຄວາມຊະນະຄັ້ງທໍາອິດນັ້ນ ເປັນພຽງຄວາມຊະນະເລັກນ້ອຍ ໂດຍແທ້ທີ່ຈິງ ຄວາມຊະນະຂອງບັນດິດຜູ້ປະພຶດກາຍສຸດຈະຣິດ ປະພຶດວະຈີສຸຈະຣິດ ປະພຶດມະໂນສຸດຈະຣິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸຄະຕິໂລກສະຫວັນເປັນຄວາມຊະນະທີ່ຍິ່ງໃຫຍ່ກວ່ານັ້ນຫຼາຍ ນີ້ເປັນພູມຂອງບັນດິດທີ່ບັນດິດພໍາເພັງໄວ້ທັງໝົດ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ພານປັນທິຕະສູດທີ ໙ ຈົບ**

# ໑໐. ເທວະທູດສູດ

## ວ່າດ້ວຍເທວະທູດ

[໔໗໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຢູ່ບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ “ພິກຂຸທັງຫຼາຍ” ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

“ພິກຂຸທັງຫຼາຍ ປຽບຄື ເຮືອນ ໒ ຫຼັງ ມີປະຕູກົງກັນ ບຸຣຸດຜູ້ມີຕາດີຢືນຢູ່ສູນກາງເຮືອນ ໒ ຫຼັງນັ້ນ ເພິ່ງເຫັນຄົນກຳລັງຍ່າງເຂົ້າເຮືອນແດ່ ກຳລັງຍ່າງອອກ ຈາກເຮືອນແດ່ ກຳລັງຍ່າງມາແດ່ ກຳລັງຍ່າງໄປແດ່ ແມ່ນສັນໃດ ເຮົາກໍຄືກັນສັນນັ້ນ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ “ສັດເຫຼົ່ານີ້ປະກອບກາຍສຸດຈະຣິດ ວະຈີສຸຈະຣິດ ແລະ ມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຖືກ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸຄະຕິໂລກສະຫວັນ ຫຼື ສັດເຫຼົ່ານີ້ປະກອບກາຍສຸດຈະຣິດ ວະຈີສຸຈະຣິດ ແລະ ມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຖືກ ຫຼັງຈາກຕາຍແລ້ວ ຈະໄປເກີດໃນໝູ່ມະນຸດ ສັດເຫຼົ່ານີ້ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ແລະ ມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນເປດວິໄສ ຫຼື ສັດເຫຼົ່ານີ້ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ແລະ ມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນກຳເນີດສັດເດຍຣັດສານ ກໍຫຼືວ່າສັດເຫຼົ່ານີ້ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ແລະ ມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ[໑]

[໔໗໔] ພິກຂຸທັງຫຼາຍ ນາຍນິຣະຍະບານ[໒]ຈັບແຂນເຂົາໄປສະແດງຕໍ່ພະຍາຍົມ[໓]ວ່າ

“ຂໍເດຊະ ຄົນຜູ້ນີ້ບໍ່ເກື້ອກູນມານດາ ບໍ່ເກື້ອກູນບິດາ ບໍ່ເກື້ອກູນສະມະນະ ບໍ່ເກື້ອກູນພາມ

ແລະບໍ່ອ່ອນນ້ອມຕໍ່ຜູ້ໃຫຍ່ໃນຕະກູນ ຂໍພຣະອົງຈົ່ງລົງໂທດຄົນຜູ້ນີ້ເທີ້ນ"

ພິກຂຸທັງຫຼາຍ ພະຍາຍົມສອບສວນຊັກໄຊ້ໄລ່ລຽງເຂົາເຖິງເທວະທູດທີ່ ໑ ວ່າ "ເຈົ້າບໍ່ເຄີຍເຫັນເທວະທູດທີ ໑ ຜາກົດໃນໝູ່ມະນຸດແດ່ບໍ?"

ເຂົາຕອບວ່າ "ບໍ່ເຄີຍເຫັນ ຂ້ານ້ອຍ"

ພະຍາຍົມຖາມເຂົາວ່າ "ໃນໝູ່ມະນຸດ ເດັກນ້ອຍຜູ້ຍັງອ່ອນນອນຫງາຍກິ້ງເກືອກຢູ່ໃນມູດ ແລະຄູດຂອງຕົນ ເຈົ້າບໍ່ເຄີຍເຫັນແດ່ບໍ?"

ເຂົາຕອບວ່າ "ເຄີຍເຫັນ ໂດຍຂ້ານ້ອຍ"

"ເຈົ້ານັ້ນເປັນຜູ້ຮູ້ດຽງສາ ເປັນຜູ້ໃຫຍ່ ບໍ່ໄດ້ຄິດແນວນີ້ຫຼືວ່າ "ເຖິງໂຕເຮົາກໍມີຄວາມເກີດເປັນທຳມະດາ ບໍ່ລ່ວງພົ້ນຄວາມເກີດໄປໄດ້ ຖ້າຈັ່ງຊັ້ນ ເຮົາຈະທຳຄວາມດີທາງກາຍ ວາຈາ ແລະໃຈ"

"ບໍ່ເຄີຍຄິດ ຍ້ອນມົວຜະໝາດຢູ່ ຂ້ານ້ອຍ"

"ເຈົ້າບໍ່ໄດ້ທຳຄວາມດີທາງກາຍ ວາຈາ ແລະ ໃຈ ຍ້ອນມົວຜະໝາດຢູ່ ຖ້າຈັ່ງຊັ້ນ ເຮົາຈະລົງໂທດເຈົ້າຕາມຖານະທີ່ຜະໝາດ ກໍບາບກຳນີ້ນັ້ນ ບິດາມານດາ ອ້າຍນ້ອງຊາຍ ເອື້ອຍນ້ອງສາວ ມິດ ອຳມາດ ຍາດສາໂລຫິດ ສະມະນະພາມ ເທວະດາ ບໍ່ໄດ້ເຮັດໃຫ້ເຈົ້າເລີຍ ເຈົ້າເຮັດເອງແທ້ ໆ ເຈົ້ານັ້ນເອງຕ້ອງຮັບຜົນຂອງບາບກຳນັ້ນ" (໑)

[໔໙໓] ພະຍາຍົມເມື່ອສອບສວນຊັກໄຊ້ໄລ່ລຽງເຂົາເຖິງເທວະທູດທີ ໑ ແລ້ວ ຈຶ່ງສອບສວນຊັກໄຊ້ໄລ່ລຽງ ເຖິງເທວະທູດທີ ໔ ວ່າ "ເຈົ້າບໍ່ເຄີຍເຫັນເທວະທູດທີ ໔ ຜາກົດໃນໝູ່ມະນຸດແດ່ບໍ?"

ເຂົາຕອບວ່າ "ບໍ່ເຄີຍເຫັນ ຂ້ານ້ອຍ"

"ໃນໝູ່ມະນຸດ ສະຕີຫຼືບຸຣຸດມີອາຍຸ ໘໐ ປີ ໗໙໗ ໙໐ ປີ ໗໙໗ ຫຼື ໑໐໐ ປີ ເປັນຄົນຊະຣາ ມີດູກຂ້າງຄົດ ຫຼັງໂກ່ງ ຫຼັງກ່ອມ ຖືໄມ້ການເທົ້າ ຍ່າງງົກ ໆ ເງິ່ນ ໆ ສະເງີ ສະຫງະ ໝົດຄວາມເປັນໜຸ່ມສາວ ແຂ້ວຫຼ່ອນ ຜົມຫງອກ ຫົວລ້ານ ໜັງຫ່ຽວ ໂຕຕົກກະ ເຈົ້າບໍ່ເຄີຍເຫັນແດ່ບໍ?"

"ເຄີຍເຫັນ ຂ້ານ້ອຍ"

"ເຈົ້ານັ້ນເປັນຜູ້ຮູ້ດຽງສາ ເປັນຜູ້ໃຫຍ່ ບໍ່ໄດ້ຄິດແນວນີ້ຫຼືວ່າ "ເຖິງໂຕເຮົາກໍມີຄວາມແກ່ເປັນທຳມະດາ ບໍ່ລ່ວງພົ້ນຄວາມແກ່ໄປໄດ້ ຖ້າຈັ່ງຊັ້ນ ເຮົາຈະທຳຄວາມດີທາງກາຍ ວາຈາ ແລະໃຈ"

"ບໍ່ເຄີຍຄິດ ຍ້ອນມົວຜະໝາດຢູ່ ຂ້ານ້ອຍ"

"ເຈົ້າບໍ່ໄດ້ທຳຄວາມດີທາງກາຍ ວາຈາ ແລະໃຈ ຍ້ອນມົວຜະໝາດຢູ່ ຖ້າຈັ່ງຊັ້ນ ເຮົາຈະລົງໂທດເຈົ້າຕາມຖານະທີ່ຜະໝາດ ກໍບາບກຳນີ້ນັ້ນ ບິດາມານດາ ອ້າຍນ້ອງຊາຍ ເອື້ອຍນ້ອງສາວ ມິດ ອຳມາດ ຍາດສາໂລຫິດ ສະມະນະພາມ ເທວະດາ ບໍ່ໄດ້ເຮັດໃຫ້ເຈົ້າເລີຍ ເຈົ້າເຮັດເອງແທ້ ໆ ເຈົ້ານັ້ນ ເອງຕ້ອງຮັບຜົນຂອງບາບກຳນັ້ນ" (໔)

[໔໖໔] ພະຍາຍົມເມື່ອສອບສວນຊັກໄຊ້ໄລ່ລຽງເຂົາເຖິງເທວະທູດທີ່ ໔ ແລ້ວ ຈຶ່ງສອບສວນຊັກໄຊ້ໄລ່ລຽງເຖິງເທວະທູດທີ ໓ ວ່າ "ເຈົ້າບໍ່ເຄີຍເຫັນເທວະທູດທີ ໓ ຜາກົດໃນໝູ່ມະນຸດແດ່ບໍ?"

ເຂົາຕອບວ່າ "ບໍ່ເຄີຍເຫັນ ຂ້ານ້ອຍ"

"ໃນໝູ່ມະນຸດ ສະຕີຫຼືບຸຣຸດເຈັບປ່ວຍ ປະສົບທຸກ ເປັນໄຂ້ໜັກ ນອນຈົມຢູ່ໃນມູດແລະຄູດຂອງຕົນ ຜູ້ອື່ນຕ້ອງຊ່ອຍປະຄອງໃຫ້ລຸກຂຶ້ນຊ່ອຍປ້ອນອາຫານ ເຈົ້າບໍ່ເຄີຍເຫັນແດ່ບໍ?"

"ເຄີຍເຫັນ ຂ້ານ້ອຍ"

"ເຈົ້ານັ້ນເປັນຜູ້ຮູ້ດຽງສາ ເປັນຜູ້ໃຫຍ່ ບໍ່ໄດ້ຄິດແນວນີ້ຫຼືວ່າ "ເຖິງໂຕເຮົາກໍມີຄວາມເຈັບໄຂ້ເປັນທຳມະດາ ບໍ່ລ່ວງພົ້ນຄວາມເຈັບໄຂ້ໄປໄດ້ ຖ້າຈັ່ງຊັ້ນ ເຮົາຈະທຳຄວາມດີທາງກາຍວາຈາແລະໃຈ"

"ບໍ່ເຄີຍຄິດ ຍ້ອນມົວຜະໝາດຢູ່ ຂ້ານ້ອຍ"

"ເຈົ້າບໍ່ໄດ້ທຳຄວາມດີທາງກາຍ ວາຈາ ແລະໃຈ ຍ້ອນມົວຜະໝາດຢູ່ ຖ້າຈັ່ງຊັ້ນ ເຮົາຈະລົງໂທດເຈົ້າຕາມຖານະທີ່ຜະໝາດ ກໍບາບກຳນີ້ນັ້ນ ບິດາມານດາ ອ້າຍນ້ອງຊາຍ ເອື້ອຍນ້ອງສາວ ມິດ ອຳມາດ ຍາດສາໂລຫິດ ສະມະນະພາມ ເທວະດາ ບໍ່ໄດ້ເຮັດໃຫ້ເຈົ້າເລີຍ ເຈົ້າເຮັດເອງແທ້ ໆ ເຈົ້ານັ້ນເອງ ຕ້ອງຮັບຜົນຂອງບາບກຳນັ້ນ" (໓)

[໔໖໕] ພະຍາຍົມ ເມື່ອສອບສວນຊັກໄຊ້ໄລ່ລຽງເຂົາເຖິງເທວະທູດທີ່ ໓ ແລ້ວ ຈຶ່ງສອບສວນຊັກໄຊ້ໄລ່ລຽງເຖິງເທວະທູດທີ່ ໔ ວ່າ "ເຈົ້າເຄີຍເຫັນເທວະທູດທີ່ ໔ ຜາກົດໃນໝູ່ມະນຸດແດ່ບໍ?"

ເຂົາຕອບວ່າ "ບໍ່ເຄີຍເຫັນ ຂ້ານ້ອຍ"

"ໃນໝູ່ມະນຸດ ພຣະຣາຊາຮັບສັ່ງໃຫ້ຈັບໂຈນຜູ້ປະພຶດຜິດມາແລ້ວ ລົງອາຍາດ້ວຍປະ

ການຕ່າງ ໆ ຄື ໃຫ້ຂຽນດ້ວຍແສ້ແດ່ ໃຫ້ຂຽນດ້ວຍຫວາຍແດ່ ໃຫ້ຕີດ້ວຍໄມ້ຄ້ອນແດ່ ຕັດມືແດ່ ຕັດຕີນແດ່ ຕັດທັງມືແລະຕີນແດ່ ຕັດໃບຫູແດ່ ຕັດດັງແດ່ ຕັດທັງໃບຫູແລະດັງແດ່ ວາງກ້ອນເຫຼັກແດງເທິງຫົວແດ່ ລອກໜັງຫົວແລ້ວຂັດໃຫ້ຂາວເໝືອນສັງແດ່ ເອົາໄຟຍັດປາກຈົນເລືອດໄຫຼເໝືອນປາກຣາຫູແດ່ ເອົາຜ້າພັນໂຕຣົດນ້ຳມັນແລ້ວໄຟເຜົາເຜົາແດ່ ພັນມືແລ້ວໄຟເຜົາຕາງຄົບໄຟແດ່ ລອກໜັງຕັ້ງແຕ່ຄໍເຖິງຂໍ້ຕີນໃຫ້ລຸກຍ່າງຢຽບໜັງຈົນລົ້ມລົງແດ່ ລອກໜັງຕັ້ງແຕ່ຄໍເຖິງແອວເຮັດໃຫ້ແນມເບິ່ງຄືວ່ານຸ່ງຜ້າຄາກອງແດ່ ໃສ່ປອກເຫຼັກທີ່ແຂນສອກແລະເຂົ່າແລ້ວສຽບຫລາວທັງ ໕ ທິດເອົາໄຟເຜົາແດ່ ໃຊ້ເບັດກ່ຽວໜັງ ຊີ້ນ ເອັນອອກມາແດ່ ປາດຊີ້ນອອກເປັນແວ່ນ ໆ ເໝືອນຫລຽນກະສາບແດ່ ປາດໜັງ ຊີ້ນ ເອັນ ອອກເຫຼືອໄວ້ແຕ່ກະດູກແດ່ ໃຊ້ຫຼາວແທງຮູຫູໃຫ້ຊອດເຖິງກັນແດ່ ສຽບໃຫ້ຕິດດິນແລ້ວຈັບເຂົາປິ່ນໄດ້ຮອບແດ່ ທຸບກະດູກໃຫ້ແຫຼກແລ້ວລອກໜັງອອກເຫຼືອໄວ້ແຕ່ກອງຊີ້ນເໝືອນຕັ່ງໃບໄມ້ແດ່ ຣົດໂຕດ້ວຍນ້ຳມັນທີ່ກຳລັງຮ້ອນຟົດແດ່ ໃຫ້ໝາກັດກິນຈົນເຫຼືອແຕ່ກະດູກແດ່ ໃຫ້ນອນເທິງຫຼາວທັງເປັນແດ່ ຕັດຫົວອອກດ້ວຍດາບແດ່ ເຈົ້າບໍ່ເຄີຍເຫັນແດ່ບໍ?"

"ເຄີຍເຫັນ ຂ້ານ້ອຍ"

"ເຈົ້ານັ້ນ ເປັນຜູ້ຮູ້ດຽງສາ ເປັນຜູ້ໃຫຍ່ ບໍ່ໄດ້ຄິດແນວນີ້ຫຼືວ່າ "ໄດ້ຂ່າວວ່າ ສັດຜູ້ເຮັດບາບກຳໄວ້ເຫຼົ່ານັ້ນ ຈະຖືກລົງອາຍາດ້ວຍປະການຕ່າງ ໆ ປານນີ້ໃນປັດຈຸບັນ ບໍ່ຈຳເປັນຕ້ອງກ່າວເຖິງຊາດໜ້າ ຖ້າຈັ່ງຊັ້ນ ເຮົາຈະທຳຄວາມດີທາງກາຍ ວາຈາ ແລະໃຈ"

"ບໍ່ເຄີຍຄິດ ຍ້ອນມົວຜະໝາດຢູ່ ຂ້ານ້ອຍ"

"ເຈົ້າບໍ່ໄດ້ທຳຄວາມດີທາງກາຍ ວາຈາ ແລະ ໃຈ ຍ້ອນມົວຜະໝາດຢູ່ ຖ້າຈັ່ງຊັ້ນ ເຮົາຈະລົງໂທດເຈົ້າຕາມຖານະທີ່ຜະໝາດ ກໍບາບກຳນີ້ນັ້ນ ບິດາມານດາ ອ້າຍນ້ອງຊາຍ ເອື້ອຍນ້ອງສາວ ມິດ ອຳມາດ ຍາດສາໂລຫິດ ສະມະນະພາມ ເທວະດາ ບໍ່ໄດ້ເຮັດໃຫ້ເຈົ້າ ເຈົ້າເຮັດເອງແທ້ ໆ ເຈົ້ານັ້ນເອງຕ້ອງຮັບຜົນຂອງບາບກຳນັ້ນ" (໔)

[໔໖໖] ພະຍາຍົມເມື່ອສອບສວນຊັກໄຊ້ໄລ່ລຽງເຂົາເຖິງເທວະທູດທີ ໔ ແລ້ວ ຈຶ່ງສອບສວນຊັກໄຊ້ໄລ່ລຽງເຖິງເທວະທູດທີ ໕ ວ່າ "ເຈົ້າບໍ່ເຄີຍເຫັນເທວະທູດທີ ໕ ຜາກົດໃນໝູ່ມະນຸດແດ່ບໍ?"

ເຂົາຕອບວ່າ "ບໍ່ເຄີຍເຫັນ ຂ້ານ້ອຍ"

"ໃນໝູ່ມະນຸດ ສະຕີຫຼືບຸຣຸດທີ່ຕາຍ ໑ ມື້ ໒ ມື້ ຫຼື ໓ ມື້ ພອງຂຶ້ນ ເປັນສີຂຽວ ມີນ້ຳເຫຼືອງແຕກຊ່ານ ເຈົ້າບໍ່ເຄີຍເຫັນແດ່ບໍ?"

"ເຄີຍເຫັນ ຂ້ານ້ອຍ"

"ເຈົ້າເປັນຜູ້ຮູ້ດຽງສາ ເປັນຜູ້ໃຫຍ່ ບໍ່ໄດ້ຄິດແນວນີ້ຫຼືວ່າ "ເຖິງໂຕເຮົາກໍມີຄວາມຕາຍເປັນທຳມະດາ ບໍ່ລ່ວງພົ້ນຄວາມຕາຍໄປໄດ້ ຖ້າຈັ່ງຊັ້ນ ເຮົາຈະທຳຄວາມດີທາງກາຍ ວາຈາ ແລະໃຈ"

"ບໍ່ເຄີຍຄິດ ຍ້ອນມົວຜະໝາດຢູ່ ຂ້ານ້ອຍ"

"ເຈົ້າບໍ່ໄດ້ທຳຄວາມດີທາງກາຍ ວາຈາແລະໃຈ ຍ້ອນມົວຜະໝາດຢູ່ ຖ້າຈັ່ງຊັ້ນ ເຮົາຈະລົງໂທດເຈົ້າຕາມຖານະທີ່ຜະໝາດ ກໍບາບກຳນີ້ນັ້ນ ບິດາມານດາ ອ້າຍນ້ອງຊາຍ ເອື້ອຍນ້ອງສາວ ມິດ ອຳມາດ ຍາດສາໂລຫິດ ສະມະນະພາມ ເທວະດາ ບໍ່ໄດ້ເຮັດໃຫ້ເຈົ້າເລີຍ ເຈົ້າເຮັດເອງແທ້ ໆ ເຈົ້ານັ້ນ ເອງຕ້ອງຮັບຜົນຂອງບາບກຳນັ້ນ" (໕)

[໔໗໑] ພະຍາຍົມເມື່ອສອບສວນຊັກໄຊ້ໄລ່ລຽງເຂົາເຖິງເທວະທູດທີ ໕ ນັ້ນ ແລ້ວກໍນິ່ງສານາຍນິຣະຍະບານຈຶ່ງລົງເຄື່ອງຈອງຈຳຊື່ເຄື່ອງພັນທະນາການ ໕ ແນວ ຄື ຕອກຕະປູເຫຼັກຮ້ອນແດງທີ່ມື ໔ ຂ້າງ ທີ່ຕີນ ໔ ຂ້າງ ແລະ ທີ່ກາງເອິກ ເຂົາສະເຫວີຍທຸກຂະເວທະນາອັນແຮງກ້າຢ່າງໜັກ ເຜັດຮ້ອນ ຢູ່ບ່ອນນັ້ນ ແຕ່ຍັງບໍ່ຕາຍຕາບທໍ່ທີ່ບາບກຳນັ້ນ ຍັງບໍ່ໝົດໄປນາຍນິຣະຍະບານລາກເຂົາໄປ ເອົາຂວານຖາກ ຯລຯ ນາຍນິຣະຍະບານຈັບເຂົາເອົາຕີນຂຶ້ນ ເອົາຫົວລົງເອົາມີດປາດ ຯລຯ ຈັບເຂົາທຽມລົດແລ່ນກັບໄປກັບມາເທິງພື້ນດິນອັນຮ້ອນລຸກເປັນແປວ ຮຸ່ງສະຫວ່າງສະໄຫວ ຯລຯ ບັງຄັບເຂົາຂຶ້ນລົງພູຖ່ານໄຟລູກໃຫຍ່ທີ່ໄຟລຸກຮຸ່ງ ຯລຯ ຈັບເຂົາເອົາຕີນຂຶ້ນ ເອົາຫົວລົງ ຖິ້ມລົງໃນໂລຫະກຸມພີອັນຮ້ອນແດງລຸກເປັນແສງໄຟ ເຂົາຖືກຕົ້ມຮ້ອນຈົນໂຕພອງໃນໂລຫະກຸມພີນັ້ນ ເຂົາເມື່ອຖືກຕົ້ມເດືອດຈົນໂຕພອງໃນໂລຫະກຸມພີນັ້ນ ລາງເທື່ອລອຍຂຶ້ນລາງເທື່ອຈົມລົງ ລາງເທື່ອລອຍຂວາງ ເຂົາສະເຫວີຍທຸກຂະເວທະນາອັນແຮງກ້າຢ່າງໜັກ ເຜັດຮ້ອນ ຢູ່ໃນໂລຫະກຸມພີອັນຮ້ອນແດງນັ້ນ ແຕ່ຍັງບໍ່ຕາຍຕາບທໍ່ທີ່ບາບກຳນັ້ນ ຍັງບໍ່ໝົດໄປນາຍນິຣະຍະບານຈຶ່ງຖິ້ມເຂົາລົງໃນມະຫານະຣົກ

ກໍມະຫານະຣົກນັ້ນ

ມີ ໔ ແຈ ໔ ປະຕູ ແບ່ງອອກເປັນສ່ວນ
ມີກຳແພງເຫຼັກອ້ອມຮອບ ກວມດ້ວຍຝາເຫຼັກ
ມະຫານະຣົກນັ້ນ ມີພື້ນເປັນເຫຼັກ ລຸກຮຸ່ງສະຫວ່າງສະໄຫວ
ແຜ່ໄປໄກດ້ານລະ ໑໐໐ ໂຍດ ຕັ້ງຢູ່ຕະຫຼອດ

[໔໗໒] ພິກຂຸທັງຫຼາຍ ນ້ຳໄຟແຫ່ງມະຫານະຣົກນັ້ນ ລຸກຮຸ່ງຂຶ້ນຈາກຝາດ້ານທິດຕາເວັນອອກຮອດຝາດ້ານທິດຕາເວັນຕົກ ລຸກຮຸ່ງຂຶ້ນຈາກຝາດ້ານທິດຕາເວັນຕົກຮອດຝາດ້ານທິດຕາເວັນອອກ ລຸກຮຸ່ງຂຶ້ນຈາກຝາດ້ານທິດເໜືອຮອດຝາດ້ານທິດໃຕ້ ລຸກຮຸ່ງຂຶ້ນຈາກຝາດ້ານທິດໃຕ້ຮອດ

ຝາດ້ານທິດເໜືອ ລຸກຮຸ່ງຂຶ້ນຈາກເບື້ອງລ່າງຮອດເບື້ອງເທິງ ລຸກຮຸ່ງຂຶ້ນຈາກເບື້ອງເທິງຮອດເບື້ອງລ່າງ ເຂົາສະເຫວີຍທຸກຂະເວທະນາອັນແຮງກ້າຢ່າງໜັກ ເຜັດຮ້ອນ ຢູ່ໃນມະຫານະຣົກນັ້ນ ແຕ່ຍັງບໍ່ຕາຍຕາບທໍ່ທີ່ບາບກຳນັ້ນຍັງບໍ່ສິ້ນໄປ

ມີສະໄໝທີ່ລາງເທື່ອບາງເວລາ ເມື່ອລ່ວງການໄປດົນ ປະຕູດ້ານທິດຕາເວັນອອກຂອງມະຫານະຣົກນັ້ນຈະຖືກໄຂ ເຂົາຈະແລ່ນໄປທີ່ປະຕູນັ້ນຢ່າງໄວວາ ເມື່ອເຂົາແລ່ນໄປໄວຈຶ່ງຖືກໄຟໄໝ້ຜິວແດ່ ໄໝ້ໜັງແດ່ ໄໝ້ຊີ້ນແດ່ ໄໝ້ເອັນແດ່ ແມ່ນກະດູກທັງຫຼາຍກໍມອດໄໝ້ເປັນຄວັນ ອະໄວຍະວະທີ່ຖືກແຍກອອກແລ້ວຈະກັບຄືນຮູບເດີມທັນທີ ໃນຂະນະທີ່ເຂົາມາເຖິງ ປະຕູນັ້ນຈະຖືກອັດ ເຂົາຈຶ່ງສະເຫວີຍທຸກຂະເວທະນາອັນແຮງກ້າຢ່າງໜັກ ເຜັດຮ້ອນ ຢູ່ໃນມະຫານະຣົກນັ້ນ ແຕ່ຍັງບໍ່ຕາຍຕາບທໍ່ທີ່ບາບກຳນັ້ນຍັງບໍ່ສິ້ນໄປ

ມີສະໄໝທີ່ລາງເທື່ອບາງເວລາ ເມື່ອລ່ວງການໄປດົນ ປະຕູດ້ານທິດຕາເວັນຕົກຂອງມະຫານະຣົກນັ້ນຈະຖືກໄຂ ຯລຯ ປະຕູດ້ານທິດເໜືອຈະຖືກໄຂ ຯລຯ ປະຕູດ້ານທິດໃຕ້ຈະຖືກໄຂ ຯລຯ ເຂົາຈະແລ່ນໄປທີ່ປະຕູນັ້ນແນວວ່ອງໄວ ເມື່ອເຂົາແລ່ນໄປແນວວ່ອງໄວຈຶ່ງຖືກໄຟໄໝ້ຜິວແດ່ ໄໝ້ໜັງແດ່ ໄໝ້ຊີ້ນແດ່ ໄໝ້ເອັນແດ່ ແມ່ນກະດູກທັງຫຼາຍກໍມອດໄໝ້ເປັນຄວັນ ອະໄວຍະວະທີ່ຖືກແຍກອອກແລ້ວຈະກັບຄືນຮູບເດີມທັນທີ ໃນຂະນະທີ່ເຂົາມາເຖິງ ປະຕູນັ້ນຈະຖືກອັດ ເຂົາຈຶ່ງສະເຫວີຍທຸກຂະເວທະນາອັນແຮງກ້າຢ່າງໜັກ ເຜັດຮ້ອນ ຢູ່ໃນມະຫານະຣົກນັ້ນ ແຕ່ຍັງບໍ່ຕາຍຕາບທໍ່ທີ່ບາບກຳນັ້ນຍັງບໍ່ສິ້ນໄປ

ມີສະໄໝທີ່ບາງເທື່ອບາງເວລາ ເມື່ອລ່ວງການໄປດົນ ປະຕູມະຫານະຣົກດ້ານທິດຕາເວັນອອກຈະຖືກໄຂ ເຂົາຈະແລ່ນໄປທີ່ປະຕູນັ້ນຢ່າງໄວວາ ເມື່ອເຂົາແລ່ນໄປ ຈຶ່ງຖືກໄຟໄໝ້ຜິວແດ່ ໄໝ້ໜັງແດ່ ໄໝ້ຊີ້ນແດ່ ໄໝ້ເອັນແດ່ ແມ່ນກະດູກທັງຫຼາຍກໍມອດໄໝ້ເປັນຄວັນ ອະໄວຍະວະທີ່ຖືກແຍກອອກແລ້ວຈະກັບຄືນຮູບເດີມທັນທີ (ແຕ່) ເຂົາຈະອອກທາງປະຕູນັ້ນໄດ້

[໔໗໙] ພິກຂຸທັງຫຼາຍ

໑. ຮອບ ໆ ມະຫານະຣົກນັ້ນ ມີຄູດນະຣົກຂະໜາດໃຫຍ່ຢູ່ ເຂົາຕົກລົງໃນຄູດນະຣົກນັ້ນ ໃນຄູດນະຣົກນັ້ນແລ ສັດປາກເຂັມທັງຫຼາຍຍ່ອມເຈາະຜິວ ເຈາະຜິວແລ້ວ ຈຶ່ງເຈາະໜັງ ເຈາະໜັງແລ້ວ ຈຶ່ງເຈາະຊີ້ນ ເຈາະຊີ້ນແລ້ວ ຈຶ່ງເຈາະເອັນ ເຈາະເອັນແລ້ວ ຈຶ່ງເຈາະກະດູກ ເຈາະກະດູກແລ້ວ ຈຶ່ງກິນເຍື່ອໃນກະດູກ ເຂົາສະເຫວີຍທຸກຂະເວທະນາອັນແຮງກ້າຢ່າງໜັກ ເຜັດຮ້ອນ ຢູ່ໃນມະຫານະຣົກນັ້ນ ແຕ່ຍັງບໍ່ຕາຍຕາບທໍ່ທີ່ບາບກຳນັ້ນຍັງບໍ່ສິ້ນໄປ

໔. ຮອບ ໆ ຄູດນະຣົກນັ້ນ ມີກຸກກຸນນະຣົກ[^7] ຂະໜາດໃຫຍ່ຢູ່ ເຂົາຕົກລົງໃນກຸກກຸນນະຣົກນັ້ນ ຈຶ່ງສະເຫວີຍທຸກຂະເວທະນາອັນແຮງກ້າຢ່າງໜັກ ເຜັດຮ້ອນ ຢູ່ໃນກຸກກຸນນະຣົກນັ້ນ

ແຕ່ຍັງບໍ່ຕາຍຕາບທໍ່ທີ່ບາບກຳນັ້ນຍັງບໍ່ສິ້ນໄປ

໓. ຮອບ ໆ ກຸກກຸນນະຮົກນັ້ນ ມີປ່າງີ້ວຂະໜາດໃຫຍ່ສູງ ໑ ໂຍດ ມີໜາມຍາວ ໑໖ ອົງຄຸລີ ຮ້ອນແດງລຸກເປັນແສງໄຟ ນາຍນິຣະຍະບານບັງຄັບເຂົາຂຶ້ນລົງທີ່ປ່າງີ້ວນັ້ນ ເຂົາສະເຫວີຍທຸກຂະເວທະນາອັນແຮງກ້າຢ່າງໜັກ ເຜັດຮ້ອນ ຢູ່ໃນປ່າງີ້ວນັ້ນ ແຕ່ຍັງບໍ່ຕາຍຕາບທໍ່ທີ່ບາບກຳນັ້ນຍັງບໍ່ສິ້ນໄປ

໔. ຮອບ ໆ ປ່າງີ້ວນັ້ນມີປ່າໄມ້ທີ່ມີໃບເປັນດາບຂະໜາດໃຫຍ່ຢູ່ ເຂົາເຂົ້າໄປໃນປ່າໄມ້ທີ່ມີໃບເປັນດາບນັ້ນ ໃບໄມ້ທີ່ເປັນດາບຖືກລົມພັດແລ້ວຈະຕັດມືເຂົາແດ່ ຕັດຕີນແດ່ ຕັດມືແລະຕີນແດ່ ຕັດຫູແດ່ ຕັດດັງແດ່ ຕັດຫູແລະດັງແດ່ ເຂົາສະເຫວີຍທຸກຂະເວທະນາອັນແຮງກ້າຢ່າງໜັກ ເຜັດຮ້ອນ ຢູ່ໃນປ່າໄມ້ທີ່ມີໃບເປັນດາບນັ້ນ ແຕ່ຍັງບໍ່ຕາຍຕາບທໍ່ທີ່ບາບກຳນັ້ນຍັງບໍ່ສິ້ນໄປ

໕. ຮອບ ໆ ປ່າໄມ້ທີ່ມີໃບເປັນດາບນັ້ນ ມີແມ່ນ້ຳອັນມີນ້ຳເປັນດ່າງຂະໜາດໃຫຍ່ຢູ່ ເຂົາຕົກລົງໃນແມ່ນ້ຳອັນມີນ້ຳເປັນດ່າງນັ້ນ ຈຶ່ງລອຍໄປໃນແມ່ນ້ຳອັນມີນ້ຳເປັນດ່າງນັ້ນ ຕາມກະແສແດ່ ທວນກະແສແດ່ ຕາມກະແສແລະທວນກະແສແດ່ ເຂົາສະເຫວີຍທຸກຂະເວທະນາອັນແຮງກ້າຢ່າງໜັກ ເຜັດຮ້ອນ ຢູ່ໃນນະຮົກແມ່ນ້ຳອັນມີນ້ຳເປັນດ່າງນັ້ນ ແຕ່ຍັງບໍ່ຕາຍຕາບທໍ່ທີ່ບາບກຳນັ້ນຍັງບໍ່ສິ້ນໄປ

[໔໗໐] ພິກຂຸທັງຫຼາຍ ນາຍນິຣະຍະບານໃຊ້ເບັດກ່ຽວສັດນະຮົກນັ້ນຂຶ້ນມາວາງໄວ້ເທິງບົກແລ້ວຖາມເຂົາແນວນີ້ວ່າ “ທ່ານຜູ້ຈະເລີນທັງຫຼາຍ ເຈົ້າຕ້ອງການອັນໃດ?”

ເຂົາກ່າວແນວນີ້ວ່າ “ຂ້າພະເຈົ້າຫິວ ຂ້ານ້ອຍ”

ນາຍນິຣະຍະບານ ຈຶ່ງໃຊ້ຂໍເຫຼັກອັນຮ້ອນແດງລຸກເປັນແສງໄຟກ່ຽວປາກໃຫ້ອ້າ ແລ້ວໃສ່ກ້ອນໂລຫະອັນຮ້ອນແດງລຸກເປັນແສງໄຟເຂົ້າໄປໃນປາກ ກ້ອນໂລຫະນັ້ນຈຶ່ງໄໝ້ຮີມ ປາກແດ່ ໄໝ້ປາກແດ່ ໄໝ້ຄໍແດ່ ໄໝ້ທ້ອງແດ່ ພາໄສ້ໃຫຍ່ແດ່ ໄສ້ນ້ອຍແດ່ຂອງເຂົາ ອອກມາທາງທະວານໜັກ ເຂົາສະເຫວີຍທຸກຂະເວທະນາອັນແຮງກ້າຢ່າງໜັກ ເຜັດຮ້ອນ ຢູ່ໃນນະຮົກນັ້ນ ແຕ່ຍັງບໍ່ຕາຍຕາບທໍ່ທີ່ບາບກຳນັ້ນຍັງບໍ່ສິ້ນໄປ

ນາຍນິຣະຍະບານຖາມເຂົາວ່າ “ທ່ານຜູ້ຈະເລີນທັງຫຼາຍ ເຈົ້າຕ້ອງການອັນໃດ?”

ເຂົາກ່າວແນວນີ້ວ່າ “ຂ້າພະເຈົ້າຢາກ ຂ້ານ້ອຍ”

ນາຍນິຣະຍະບານ ຈຶ່ງໃຊ້ຂໍເຫຼັກອັນຮ້ອນແດງລຸກເປັນແສງໄຟກ່ຽວປາກໃຫ້ອ້າ ແລ້ວຖອກນ້ຳທອງແດງອັນຮ້ອນແດງລຸກເປັນແສງໄຟເຂົ້າໄປໃນປາກ ນ້ຳທອງແດງນັ້ນຈຶ່ງລວກຮີມປາກແດ່ ລວກປາກແດ່ ລວກຄໍແດ່ ລວກທ້ອງແດ່ ພາໄສ້ໃຫຍ່ແດ່ ໄສ້ນ້ອຍແດ່ຂອງເຂົາ ອອກ

ມາທາງທະວານໜັກ ເຂົາສະເຫວີຍທຸກຂະເວທະນາອັນແຮງກ້າຢ່າງໜັກ ເຜັດຮ້ອນ ຢູ່ໃນນະຣົກ ນັ້ນ ແຕ່ຍັງບໍ່ຕາຍຕາບທີ່ທີ່ບາບກຳນັ້ນ ຍັງບໍ່ໝົດໄປນາຍນີຣະຍະບານ ຈຶ່ງໂຍນເຂົາເຂົ້າໄປໃນ ມະຫານະຣົກອີກ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ພະຍາຍົມໄດ້ຄິດວ່າ "ໄດ້ຂ່າວວ່າ ຊົນເຫຼົ່າໃດເຮັດ ບາບອະກຸສົນກຳໄວ້ໃນໂລກ ຊົນເຫຼົ່ານັ້ນ ຈຶ່ງຖືກນາຍນີຣະຍະບານທໍລະມານດ້ວຍວິທີການຕ່າງ ໆ ແບບນີ້ ໂອນໍ ເຮົາເພິ່ງໄດ້ຄວາມເປັນມະນຸດ ພຣະຕະຖາຄົດອະຣະຫັນຕະ ສຳມາສຳພຸດທະ ເຈົ້າເພິ່ງສະເດັດອຸບັດຂຶ້ນໃນໂລກ ເຮົາເພິ່ງເຂົ້າໄປເຝົ້າພຣະອົງ ພຣະອົງເພິ່ງສະແດງທຳແກ່ເຮົາ ແລະເຮົາເພິ່ງຮູ້ທົ່ວເຖິງທຳຂອງພຣະອົງ"

ເຮົາໄດ້ຟັງຄວາມນັ້ນ ຈາກສະມະນະຫຼືພາມອື່ນແລ້ວ ຈຶ່ງກ່າວແບບນີ້ກໍບໍ່ມີ ແຕ່ເຮົາກ່າວ ສິ່ງທີ່ເຮົາຮູ້ເອງ ເຫັນເອງ ຮູ້ເອງທໍ່ນັ້ນ"

[໔໗໑] ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາເມື່ອຕັດເວີຍຍາກະຣະນະພາສິດນີ້ ແລ້ວ ຈຶ່ງໄດ້ຕັດຄາຖາປະພັນອື່ນອີກຕໍ່ໄປ ວ່າ

"ມານົບເຫຼົ່າໃດ ອັນເທວະທູດຕັກເຕືອນແລ້ວ ຍັງຜະໝາດຢູ່
ມານົບເຫຼົ່ານັ້ນເຂົ້າເຖິງໝູ່ທີ່ຊົ່ວ
ຍ່ອມເສົ້າໂສກຕະຫຼອດການລະນານ
ສ່ວນສັດຕະບຸຣຸດເຫຼົ່າໃດເປັນຜູ້ສະງົບໃນໂລກນີ້
ອັນເທວະທູດຕັກເຕືອນແລ້ວ ບໍ່ຜະໝາດໃນອະຣິຍະທຳໃນການໃດ ໆ
ເຫັນໄພໃນຄວາມຢຶດໝັ້ນຖືໝັ້ນ
ທີ່ເປັນບໍ່ເກີດແຫ່ງຄວາມເກີດແລະຄວາມຕາຍ
ຍ້ອນບໍ່ຢຶດໝັ້ນຖືໝັ້ນ ຈຶ່ງລຸດພົ້ນ
ໃນທຳເປັນທີ່ສິ້ນຄວາມເກີດແລະຄວາມຕາຍ
ສັດຕະບຸຣຸດເຫຼົ່ານັ້ນຈຶ່ງເຖິງຄວາມກະເສມ
ມີຄວາມສຸກ ດັບສະນິດໃນປັດຈຸບັນ
ລ່ວງພົ້ນເວນແລະໄພທຸກຢ່າງ
ຂ້າມພົ້ນທຸກທັງໝົດໄດ້ແລ້ວ" ດັ່ງນີ້ແລ[๑]

**ເທວະທູດສູດທີ ໑໐ ຈົບ**

**ສູນຍະຕະວັກທີ ໓ ຈົບ**

# ລວມພຣະສູດທີ່ ມີໃນວັກນີ້ ຄື

໑. ຈູລະສູນຍະຕະສູດ
໒. ອັດສະຣິຍັບພູຕະສູດ
໕. ທັນຕະພູມິສູດ
໗. ອະນຸຣຸດທະສູດ
໙. ພານປັນທິຕະສູດ
໘. ມະຫາສູນຍະຕະສູດ
໔. ພັກກຸລັດເຖຣັດສະຣິຍັບພູຕະສູດ
໖. ພູມິດສູດ
໘. ອຸປັກກິເລດສູດ
໑໐. ເທວະທູດສູດ

# ໔. ວິພັງຄະວັກ

## ໝວດວ່າດ້ວຍການຈຳແນກທຳ

# ໑. ພັດເທກະຣັດຕະສູດ

## ວ່າດ້ວຍຜູ້ມີຣາຕີດຽວຈະເລີນ

[໔໓໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຢູ່ບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ເຮົາຈັກສະແດງອຸດເທດ[໑] ແລະ ວິພັງ[໒]ຂອງບຸກຄົນຜູ້ມີຣາຕີດຽວຈະເລີນ[໓] ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງອຸດເທດ ແລະ ວິພັງນັ້ນ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດຄາຖາປະພັນນີ້ ວ່າ

"ບຸກຄົນບໍ່ຄວນຄຳນຶງເຖິງ[໔]ສິ່ງທີ່ລ່ວງໄປແລ້ວ[໕]
ບໍ່ຄວນຫວັງສິ່ງທີ່ຍັງບໍ່ມາເຖິງ
ສິ່ງໃດລ່ວງໄປແລ້ວ ສິ່ງນັ້ນກໍເປັນອັນລະໄປແລ້ວ
ແລະສິ່ງໃດທີ່ຍັງບໍ່ມາເຖິງ ສິ່ງນັ້ນກໍເປັນອັນຍັງບໍ່ມາເຖິງ
ສ່ວນບຸກຄົນໃດເຫັນແຈ້ງທຳທີ່ເປັນປັດຈຸບັນ
ບໍ່ງ່ອນແງ່ນ ບໍ່ຄອນແຄນໃນທຳນັ້ນ ໆ
ບຸກຄົນນັ້ນຄວນຈະເລີນທຳນັ້ນໃຫ້ແຈ້ງຊັດ
ບຸກຄົນຄວນທຳຄວາມພຽນຕັ້ງແຕ່ມື້ນີ້ທັນທີ
ໃຜນໍຈະຮູ້ວ່າ ຄວາມຕາຍຈັກມີມາໃນມື້ອື່ນ
ຍ້ອນວ່າຄວາມຜ່ອນຜັນກັບມັດຈຸຣາດຜູ້ມີເສນາຫຼາຍນັ້ນ
ຍ່ອມບໍ່ມີແກ່ເຮົາທັງຫຼາຍ
ພຣະມຸນີຜູ້ສະງົບຮຽກບຸກຄົນຜູ້ມີຄວາມພຽນ
ບໍ່ຂີ້ຄ້ານທັງກາງເວັນແລະກາງຄືນ

ເຊິ່ງມີປົກກະຕິຢູ່ແນວນີ້ນັ້ນແລວ່າ "ຜູ້ມີຣາຕີດຽວຈະເລີນ"[๑]

[໔໗໓] ບຸກຄົນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ ເປັນແນວໃດ?

ຄື ບຸກຄົນດຳເນີນໄປຕາມຄວາມເພີດເພີນ໌ທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດ ເຮົາໄດ້ມີຮູບແນວນີ້"

ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດ ເຮົາໄດ້ມີເວທະນາແນວນີ້"
ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດ ເຮົາໄດ້ມີສັນຍາແນວນີ້"
ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດ ເຮົາໄດ້ມີສັງຂານແນວນີ້"
ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດ ເຮົາໄດ້ມີວິນຍານແນວນີ້"

ພິກຂຸທັງຫຼາຍ ບຸກຄົນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ ເປັນແນວນີ້ແລ

ບຸກຄົນບໍ່ຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ ເປັນແນວໃດ?

ຄື ບຸກຄົນບໍ່ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດ ເຮົາໄດ້ມີຮູບແນວນີ້"

ບໍ່ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດເຮົາໄດ້ມີເວທະນາແນວນີ້"

ບໍ່ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດ ເຮົາໄດ້ມີສັນຍາແນວນີ້"

ບໍ່ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດ ເຮົາໄດ້ມີສັງຂານແນວນີ້"

ບໍ່ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດ ເຮົາໄດ້ມີວິນຍານແນວນີ້"

ພິກຂຸທັງຫຼາຍ ບຸກຄົນບໍ່ຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ ເປັນແນວນີ້ແລ

[໔໗໔] ບຸກຄົນຫວັງສິ່ງທີ່ຍັງບໍ່ມາເຖິງ ເປັນແນວໃດ?

ຄື ບຸກຄົນດຳເນີນໄປຕາມຄວາມເພີດເພີນໃນປັນຈະຂັນວ່າ "ໃນອະນາຄົດ ເຮົາເພິ່ງມີຮູບແນວນີ້"

ໃນອະນາຄົດ ເຮົາເພິ່ງມີເວທະນາແນວນີ້ ຯລຯ
ໃນອະນາຄົດ ເຮົາເພິ່ງມີສັນຍາແນວນີ້ ຯລຯ
ໃນອະນາຄົດ ເຮົາເພິ່ງມີສັງຂານແນວນີ້
ດຳເນີນໄປຕາມຄວາມເພີດເພີນໃນປັນຈະຂັນວ່າ "ໃນອະນາຄົດເຮົາເພິ່ງມີວິນຍານແນວນີ້"

ພິກຂຸທັງຫຼາຍ ບຸກຄົນຫວັງສິ່ງທີ່ຍັງບໍ່ມາເຖິງ ເປັນແນວນີ້ແລ

ບຸກຄົນບໍ່ຫວັງສິ່ງທີ່ຍັງບໍ່ມາເຖິງ ເປັນແນວໃດ?

ຄື ບຸກຄົນບໍ່ດຳເນີນໄປຕາມຄວາມເພີດເພີນໃນປັນຈະຂັນວ່າ "ໃນອະນາຄົດ ເຮົາເພິ່ງມີຮູບແນວນີ້"

ໃນອະນາຄົດ ເຮົາເພິ່ງມີເວທະນາແນວນີ້ ຯລຯ
ໃນອະນາຄົດ ເຮົາເພິ່ງມີສັນຍາແນວນີ້ ຯລຯ
ໃນອະນາຄົດ ເຮົາເພິ່ງມີສັງຂານແນວນີ້ ຯລຯ
ບໍ່ດຳເນີນໄປຕາມຄວາມເພີດເພີນໃນປັນຈະຂັນວ່າ "ໃນອະນາຄົດ ເຮົາເພິ່ງມີວິນຍານແນວນີ້"

ພິກຂຸທັງຫຼາຍ ບຸກຄົນບໍ່ຫວັງສິ່ງທີ່ຍັງບໍ່ມາເຖິງ ເປັນແນວນີ້ແລ

[໔໗໕] ບຸກຄົນງ່ອນແງ່ນໃນທຳທີ່ເປັນປັດຈຸບັນ ເປັນແນວໃດ?

ຄື ປຸຖຸຊົນໃນໂລກນີ້ ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາແດ່ ພິຈາລະນາເຫັນອັດຕາມີຮູບແດ່ ພິຈາລະນາເຫັນຮູບໃນອັດຕາແດ່ ພິຈາລະນາເຫັນອັດຕາໃນຮູບແດ່

ພິຈາລະນາເຫັນເວທະນາ ຯລຯ
ພິຈາລະນາເຫັນສັນຍາ ຯລຯ
ພິຈາລະນາເຫັນສັງຂານ ຯລຯ
ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາແດ່ ພິຈາລະນາເຫັນອັດຕາມີວິນຍານແດ່ ພິຈາລະນາເຫັນວິນຍານໃນອັດຕາແດ່ ພິຈາລະນາເຫັນອັດຕາໃນວິນຍານແດ່
ພິກຂຸທັງຫຼາຍ ບຸກຄົນງ່ອນແງ່ນໃນທຳທີ່ເປັນປັດຈຸບັນ ເປັນແນວນີ້ແລ

ບຸກຄົນບໍ່ງ່ອນແງ່ນໃນທຳທີ່ເປັນປັດຈຸບັນ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ ຜູ້ໄດ້ສະດັບ ໄດ້ເຫັນພຣະອະຣິຍະ ສະຫຼາດໃນທຳຂອງພຣະອະຣິຍະ ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ໄດ້ເຫັນສັດຕະບຸຣຸດ ສະຫຼາດໃນທຳຂອງສັດຕະບຸຣຸດ ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ບໍ່ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາແດ່ ບໍ່ພິຈາລະນາເຫັນອັດຕາມີຮູບແດ່ ບໍ່ພິຈາລະນາເຫັນຮູບໃນອັດຕາແດ່ ບໍ່

ພິຈາລະນາເຫັນອັດຕາໃນຮູບແດ່

ບໍ່ພິຈາລະນາເຫັນເວທະນາ ຯລຯ

ບໍ່ພິຈາລະນາເຫັນສັນຍາ ຯລຯ

ບໍ່ພິຈາລະນາເຫັນສັງຂານ ຯລຯ

ບໍ່ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາແດ່ ບໍ່ພິຈາລະນາເຫັນອັດຕາມີວິນຍານແດ່ ບໍ່ພິຈາລະນາເຫັນວິນຍານໃນອັດຕາແດ່ ບໍ່ພິຈາລະນາເຫັນອັດຕາໃນວິນຍານແດ່

ພິກຂຸທັງຫຼາຍ ບຸກຄົນບໍ່ງ່ອນແງ່ນໃນທຳທີ່ເປັນປັດຈຸບັນ ເປັນແນວນີ້ແລ

ບຸກຄົນບໍ່ຄວນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ
ບໍ່ຄວນຫວັງສິ່ງທີ່ຍັງບໍ່ມາເຖິງ
ສິ່ງໃດລ່ວງໄປແລ້ວ ສິ່ງນັ້ນກໍເປັນອັນລະໄປແລ້ວ
ແລະສິ່ງໃດທີ່ຍັງບໍ່ມາເຖິງ ສິ່ງນັ້ນກໍເປັນອັນຍັງບໍ່ມາເຖິງ
ສ່ວນບຸກຄົນໃດເຫັນແຈ້ງທຳທີ່ເປັນປັດຈຸບັນ
ບໍ່ງ່ອນແງ່ນ ບໍ່ຄອນແຄນໃນທຳນັ້ນ ໆ
ບຸກຄົນນັ້ນຄວນຈະເລີນທຳນັ້ນໃຫ້ແຈ້ງຊັດ
ບຸກຄົນຄວນທຳຄວາມພຽນຕັ້ງແຕ່ມື້ນີ້ທັນທີ
ໃຜນໍຈະຮູ້ວ່າ ຄວາມຕາຍຈັກມີມາໃນມືອື່ນນີ້
ຍ້ອນວ່າຄວາມຜ່ອນຜັນກັບມັດຈຸຣາດຜູ້ມີເສນາຫຼາຍນັ້ນ
ຍ່ອມບໍ່ມີແກ່ເຮົາທັງຫຼາຍ
ພຣະມຸນີຜູ້ສະງົບຮຽກບຸກຄົນຜູ້ມີຄວາມພຽນ
ບໍ່ຂີ້ຄ້ານທັງກາງເວັນແລະກາງຄືນ
ເຊິ່ງມີປົກກະຕິຢູ່ແນວນີ້ນັ້ນແລວ່າ "ຜູ້ມີຣາຕີດຽວຈະເລີນ"

ພິກຂຸທັງຫຼາຍ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ "ເຮົາຈັກສະແດງອຸດເທດ ແລະ ວິພັງຂອງບຸກຄົນຜູ້ມີຣາຕີດຽວຈະເລີນແກ່ທ່ານທັງຫຼາຍ" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ດ້ວຍປະການຢ່າງນີ້"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ພັດເທກະຣັດຕະສູດທີ ໑ ຈົບ**

# ໘. ອານັນທະພັດເທກະຣັດຕະສູດ

## ວ່າດ້ວຍພຣະອານົນສະແດງເລື້ອງຜູ້ມີຣາຕິດຽວຈະເລີນ

[໔໗໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນແລ ທ່ານພຣະອານົນຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ແລະ ກ່າວອຸດເທດແລະວິພັງແຫ່ງບຸກຄົນຜູ້ມີຣາຕິດຽວຈະເລີນຢູ່ໃນຫໍສັນ ເມື່ອເວລາແລງ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກທີ່ຫຼີບຫຼີກ ເຂົ້າໄປສູ່ຫໍສັນ ແລ້ວປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ ໃຜນໍ? ຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ແລະ ກ່າວອຸດເທດແລະວິພັງຂອງບຸກຄົນຜູ້ມີຣາຕິດຽວຈະເລີນຢູ່ໃນຫໍສັນ"

ພິກຂຸທັງຫຼາຍຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານພຣະອານົນຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ແລະ ໄດ້ກ່າວອຸດເທດ ແລະ ວິພັງຂອງບຸກຄົນຜູ້ມີຣາຕິດຽວຈະເລີນຢູ່ໃນຫໍສັນ ຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກທ່ານພຣະອານົນມາດ້ວຍຕັດວ່າ "ອານົນທ່ານຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ແລະ ໄດ້ກ່າວອຸດເທດ ແລະວິພັງຂອງບຸກຄົນຜູ້ມີຣາຕິດຽວຈະເລີນໄວ້ແນວໃດ?"

ທ່ານພຣະອານົນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແນວນີ້ ແລະ ໄດ້ກ່າວອຸດເທດ ແລະ ວິພັງຂອງບຸກຄົນຜູ້ມີຣາຕິດຽວຈະເລີນ ວ່າ

"ບຸກຄົນບໍ່ຄວນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ
ບໍ່ຄວນຫວັງສິ່ງທີ່ຍັງບໍ່ມາເຖິງ

ສິ່ງໃດລ່ວງໄປແລ້ວ ສິ່ງນັ້ນກໍເປັນອັນລະໄປແລ້ວ
ແລະສິ່ງໃດທີ່ຍັງບໍ່ມາເຖິງ ສິ່ງນັ້ນກໍເປັນອັນຍັງບໍ່ມາເຖິງ
ສ່ວນບຸກຄົນໃດເຫັນແຈ້ງທຳທີ່ເປັນປັດຈຸບັນ
ບໍ່ງ່ອນແງ່ນ ບໍ່ຄອນແຄລນໃນທຳນັ້ນ ໆ
ບຸກຄົນນັ້ນຄວນຈະເລີນທຳນັ້ນໃຫ້ແຈ້ງຊັດ
ບຸກຄົນຄວນທຳຄວາມພຽນຕັ້ງແຕ່ມື້ນີ້ທັນທີ
ໃຜນໍຈະຮູ້ວ່າ ຄວາມຕາຍຈັກມີໃນມືອື່ນນີ້
ຍ້ອນວ່າຄວາມຜ່ອນຜັນກັບມັດຈຸຣາດຜູ້ມີເສນາຫຼາຍນັ້ນ
ຍ່ອມບໍ່ມີແກ່ເຮົາທັງຫຼາຍ
ພຣະມຸນີຜູ້ສະຫງົບຮຽກບຸກຄົນຜູ້ມີຄວາມພຽນ
ບໍ່ຂີ້ຄ້ານທັງກາງເວັນແລະກາງຄືນ
ເຊິ່ງມີປົກກະຕິຢູ່ແບບນີ້ນັ້ນແລວ່າ "ຜູ້ມີຣາຕີດຽວຈະເລີນ"

[໔໗໗] ບຸກຄົນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ ເປັນແນວໃດ?

ຄື ບຸກຄົນດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດ ເຮົາໄດ້ມີຮູບແບບນີ້"

ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດ ເຮົາໄດ້ມີເວທະນາແບບນີ້"
ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດ ເຮົາໄດ້ມີສັນຍາແບບນີ້"
ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດ ເຮົາໄດ້ມີສັງຂານແບບນີ້"
ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດ ເຮົາໄດ້ມີວິນຍານແບບນີ້"

ທ່ານຜູ້ມີອາຍຸທັງຫຼາຍ ບຸກຄົນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ ເປັນແນວນີ້ແລ

ບຸກຄົນບໍ່ຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ ເປັນແນວໃດ?

ຄື ບຸກຄົນບໍ່ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດ ເຮົາໄດ້ມີຮູບແບບນີ້"

ບໍ່ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດ ເຮົາໄດ້ມີເວທະນາແບບນີ້"
ບໍ່ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດ ເຮົາໄດ້ມີສັນຍາແບບນີ້"
ບໍ່ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດ ເຮົາໄດ້ມີສັງຂານແບບນີ້"
ບໍ່ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດ ເຮົາໄດ້ມີວິນຍານແບບນີ້"

ທ່ານຜູ້ມີອາຍຸທັງຫຼາຍ ບຸກຄົນບໍ່ຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ ເປັນແນວນີ້ແລ

ບຸກຄົນຫວັງສິ່ງທີ່ຍັງບໍ່ມາເຖິງ ເປັນແນວໃດ?

ຄື ບຸກຄົນດຳເນີນໄປຕາມຄວາມເພີດເພີນໃນປັນຈະຂັນວ່າ "ໃນອະນາຄົດ ເຮົາເພິ່ງມີຮູບແນວນີ້"

ໃນອະນາຄົດ ເຮົາເພິ່ງມີເວທະນາແນວນີ້ ຯລຯ
ໃນອະນາຄົດ ເຮົາເພິ່ງມີສັນຍາແນວນີ້ ຯລຯ
ໃນອະນາຄົດ ເຮົາເພິ່ງມີສັງຂານແນວນີ້ ຯລຯ
ດຳເນີນໄປຕາມຄວາມເພີດເພີນໃນປັນຈະຂັນວ່າ "ໃນອະນາຄົດ ເຮົາເພິ່ງມີວິນຍານແນວນີ້"

ທ່ານຜູ້ມີອາຍຸທັງຫຼາຍ ບຸກຄົນຫວັງສິ່ງທີ່ຍັງບໍ່ມາເຖິງ ເປັນແນວນີ້ແລ

ບຸກຄົນບໍ່ຫວັງສິ່ງທີ່ຍັງບໍ່ມາເຖິງ ເປັນແນວໃດ?

ຄື ບຸກຄົນບໍ່ດຳເນີນໄປຕາມຄວາມເພີດເພີນໃນປັນຈະຂັນວ່າ "ໃນອະນາຄົດ ເຮົາເພິ່ງມີຮູບແນວນີ້"

ໃນອະນາຄົດ ເຮົາເພິ່ງມີເວທະນາແນວນີ້ ຯລຯ
ໃນອະນາຄົດ ເຮົາເພິ່ງມີສັນຍາແນວນີ້ ຯລຯ
ໃນອະນາຄົດ ເຮົາເພິ່ງມີສັງຂານແນວນີ້ ຯລຯ
ບໍ່ດຳເນີນໄປຕາມຄວາມເພີດເພີນໃນປັນຈະຂັນວ່າ "ໃນອະນາຄົດ ເຮົາເພິ່ງມີວິນຍານແນວນີ້"

ທ່ານຜູ້ມີອາຍຸທັງຫຼາຍ ບຸກຄົນບໍ່ຫວັງສິ່ງທີ່ຍັງບໍ່ມາເຖິງ ເປັນແນວນີ້ແລ

ບຸກຄົນງ່ອນແງ່ນໃນທຳທີ່ເປັນປັດຈຸບັນ ເປັນແນວໃດ?

ຄື ປຸຖຸຊົນໃນໂລກນີ້ ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາແດ່ ພິຈາລະນາເຫັນອັດຕາມີຮູບແດ່ ພິຈາລະນາເຫັນຮູບໃນອັດຕາແດ່ ພິຈາລະນາເຫັນອັດຕາໃນຮູບແດ່

ພິຈາລະນາເຫັນເວທະນາ ຯລຯ
ພິຈາລະນາເຫັນສັນຍາ ຯລຯ

ພິຈາລະນາເຫັນສັງຂານ ຯລຯ

ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາແດ່ ພິຈາລະນາເຫັນອັດຕາມີວິນຍານແດ່ ພິຈາລະນາເຫັນວິນຍານໃນອັດຕາແດ່ ພິຈາລະນາເຫັນອັດຕາໃນວິນຍານແດ່

ທ່ານຜູ້ມີອາຍຸທັງຫຼາຍ ບຸກຄົນງ່ອນແງ່ນໃນທຳທີ່ເປັນປັດຈຸບັນ ເປັນແນວນີ້ແລ

ບຸກຄົນບໍ່ງ່ອນແງ່ນໃນທຳທີ່ເປັນປັດຈຸບັນ ເປັນແນວໃດ?

ຄື ອະຣິຍະສາວົກໃນພຣະທຳວິໄນນີ້ ຜູ້ໄດ້ສະດັບ ໄດ້ເຫັນພຣະອະຣິຍະ ສະຫຼາດໃນທຳຂອງພຣະອະຣິຍະ ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ໄດ້ເຫັນສັດຕະບຸຣຸດ ສະຫຼາດໃນທຳຂອງສັດຕະບຸຣຸດ ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ບໍ່ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາແດ່ ບໍ່ພິຈາລະນາເຫັນອັດຕາມີຮູບແດ່ ບໍ່ພິຈາລະນາເຫັນຮູບໃນອັດຕາແດ່ ບໍ່ພິຈາລະນາເຫັນອັດຕາໃນຮູບແດ່

ບໍ່ພິຈາລະນາເຫັນເວທະນາ ຯລຯ

ບໍ່ພິຈາລະນາເຫັນສັນຍາ ຯລຯ

ບໍ່ພິຈາລະນາເຫັນສັງຂານ ຯລຯ

ບໍ່ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາແດ່ ບໍ່ພິຈາລະນາເຫັນອັດຕາມີວິນຍານແດ່ ບໍ່ພິຈາລະນາເຫັນວິນຍານໃນອັດຕາແດ່ ບໍ່ພິຈາລະນາເຫັນອັດຕາໃນວິນຍານແດ່

ທ່ານຜູ້ມີອາຍຸທັງຫຼາຍ ບຸກຄົນບໍ່ງ່ອນແງ່ນໃນທຳທີ່ເປັນປັດຈຸບັນ ເປັນແນວນີ້ແລ

ບຸກຄົນບໍ່ຄວນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ
ບໍ່ຄວນຫວັງສິ່ງທີ່ຍັງບໍ່ມາເຖິງ
ສິ່ງໃດລ່ວງໄປແລ້ວ ສິ່ງນັ້ນກໍເປັນອັນລະໄປແລ້ວ
ແລະສິ່ງໃດທີ່ຍັງບໍ່ມາເຖິງ ສິ່ງນັ້ນກໍເປັນອັນຍັງບໍ່ມາເຖິງ
ສ່ວນບຸກຄົນໃດເຫັນແຈ້ງທຳທີ່ເປັນປັດຈຸບັນ
ບໍ່ງ່ອນແງ່ນ ບໍ່ຄອນແຄນໃນທຳນັ້ນ ໆ
ບຸກຄົນນັ້ນຄວນຈະເລີນທຳນັ້ນໃຫ້ແຈ້ງຊັດ
ບຸກຄົນຄວນທຳຄວາມພຽນຕັ້ງແຕ່ມື້ນີ້ທັນທີ
ໃຜນໍຈະຮູ້ວ່າ ຄວາມຕາຍຈັກມີໃນມື້ອື່ນນີ້
ຍ້ອນວ່າຄວາມຜ່ອນຜັນກັບມັດຈຸຣາດຜູ້ມີເສນາຫຼາຍນັ້ນ
ຍ່ອມບໍ່ມີແກ່ເຮົາທັງຫຼາຍ
ພຣະມຸນີຜູ້ສະງົບຮຽກບຸກຄົນຜູ້ມີຄວາມພຽນ

ບໍ່ຂີ້ຄ້ານທັງກາງເວັນແລະກາງຄືນ
ເຊິ່ງມີປົກກະຕິຢູ່ແນວນີ້ນັ້ນແລວ່າ "ຜູ້ມີຣາຕີດຽວຈະເລີນ"

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຣອຍຣຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແນວນີ້ ແລະໄດ້ກ່າວອຸດເທດແລະວິພັງຂອງບຸກຄົນຜູ້ມີຣາຕີດຽວຈະເລີນ"

[໔໗໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ອານົນ ທ່ານຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຣອຍຣຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ແລະ ໄດ້ກ່າວອຸດເທດແລະວິພັງຂອງບຸກຄົນຜູ້ມີຣາຕີດຽວຈະເລີນ ວ່າ

"ບຸກຄົນບໍ່ຄວນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ

ฯลฯ

ພຣະມຸນີຜູ້ສະງົບຮຽກບຸກຄົນ

ฯลฯ

ນັ້ນແລວ່າ "ຜູ້ມີຣາຕີດຽວຈະເລີນ"

ບຸກຄົນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ ເປັນແນວໃດ?

ฯลฯ

ອານົນ ບຸກຄົນຄຳນຶງເຖິງສິ່ງທີ່ລ່ວງມາແລ້ວ ເປັນແນວນີ້ແລ

ບຸກຄົນບໍ່ຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ ເປັນແນວໃດ?

ฯลฯ

ອານົນ ບຸກຄົນບໍ່ຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ ເປັນແນວນີ້ແລ

ບຸກຄົນຫວັງສິ່ງທີ່ຍັງບໍ່ມາເຖິງ ເປັນແນວໃດ?

ฯลฯ

ອານົນ ບຸກຄົນຫວັງສິ່ງທີ່ຍັງບໍ່ມາເຖິງ ເປັນແນວນີ້ແລ

ບຸກຄົນບໍ່ຫວັງສິ່ງທີ່ຍັງບໍ່ມາເຖິງ ເປັນແນວໃດ?

ฯลฯ

ອານົນ ບຸກຄົນບໍ່ຫວັງສິ່ງທີ່ຍັງບໍ່ມາເຖິງ ເປັນແນວນີ້ແລ

ບຸກຄົນງ່ອນແງ່ນໃນທຳທີ່ເປັນປັດຈຸບັນ ເປັນແນວໃດ?

ຯລຯ

ອານົນ ບຸກຄົນງ່ອນແງ່ນໃນທຳທີ່ເປັນປັດຈຸບັນ ເປັນແນວນີ້ແລ

ບຸກຄົນບໍ່ງ່ອນແງ່ນໃນທຳທີ່ເປັນປັດຈຸບັນ ເປັນແນວໃດ?

ຯລຯ

ອານົນ ບຸກຄົນບໍ່ງ່ອນແງ່ນໃນທຳທີ່ເປັນປັດຈຸບັນ ເປັນແນວນີ້ແລ"

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາເມື່ອຕັດເວີຍຍາກະຣະນະພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນອື່ນອີກຕໍ່ໄປວ່າ

"ບຸກຄົນບໍ່ຄວນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ

ຯລຯ

ພຣະມຸນີຜູ້ສະງົບຮຽກບຸກຄົນ

ຯລຯ

ນັ້ນແລວ່າ "ຜູ້ມີຣາຕີດຽວຈະເລີນ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະອານົນມີໃຈຍິນດີ ຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ອານັນທະພັດເທກະຣັດຕະສູດທີ 4 ຈົບ**

# ໙. ມະຫາກັດຈານະພັດເທກະຣັດຕະສູດ

## ວ່າດ້ວຍພຣະມະຫາກັດຈານະສະແດງເລື້ອງຜູ້ມີຣາຕີດຽວຈະເລີນ

[໔໗໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຕະໂປທາຣາມ ເຂດນະຄອນຣາດຊະຄືຄັ້ງນັ້ນແລ ທ່ານພຣະສະມິທທິລຸກຂຶ້ນໃນຣາຕີຕອນໃກ້ຮຸ່ງ ເຂົ້າໄປສູ່ສະຕະໂປທະເພື່ອອາບນ້ຳ ອາບສຳເລັດແລ້ວໄດ້ກັບມາຢືນນຸ່ງຜ້າຜືນດຽວຕາກໂຕໃຫ້ແຫ້ງຢູ່ ຂະນະນັ້ນ ເມື່ອຣາຕີຜ່ານໄປ[๑] ເທວະດາອົງໜຶ່ງ ມີວັນນະງົດງາມຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວສະຕະໂປທະ ເຂົ້າໄປຫາທ່ານພຣະສະມິດທິຮອດບ່ອນຢູ່ ແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບທ່ານພຣະສະມິດທິແນວນີ້ວ່າ

"ພິກຂຸ ທ່ານຈື່ອຸດເທດ ແລະ ວິພັງຂອງບຸກຄົນຜູ້ມີຣາຕີດຽວຈະເລີນໄດ້ບໍ?"

ທ່ານພຣະສະມິດທິກ່າວວ່າ "ອາຕະມາພາບຈື່ບໍ່ໄດ້ ສ່ວນທ່ານຈື່ອຸດເທດແລະວິພັງຂອງບຸກຄົນຜູ້ມີຣາຕີດຽວຈະເລີນໄດ້ບໍ?"

"ແມ່ນຂ້າພະເຈົ້າກໍຈື່ບໍ່ໄດ້ ອັນໜຶ່ງ ທ່ານຈື່ຄາຖາທີ່ສະແດງເຖິງບຸກຄົນຜູ້ມີຣາຕີດຽວຈະເລີນໄດ້ບໍ?"

"ອາຕະມາພາບຈື່ບໍ່ໄດ້ ສ່ວນທ່ານຈື່ໄດ້ບໍ?"

"ພິກຂຸ ແມ່ນຂ້າພະເຈົ້າກໍຈື່ບໍ່ໄດ້ ຂໍທ່ານຈົ່ງສຶກສາ ຮ່ຳຮຽນ ແລະ ຈື່ອຸດເທດແລະວິພັງຂອງບຸກຄົນຜູ້ມີຣາຕີດຽວຈະເລີນເທີ້ນ ຍ້ອນວ່າອຸດເທດແລະວິພັງຂອງບຸກຄົນຜູ້ມີຣາຕີດຽວຈະເລີນ ປະກອບດ້ວຍປະໂຫຍດ ເປັນເບື້ອງຕົ້ນແຫ່ງການປະພຶດພົມມະຈັນ"

ເມື່ອແລ້ວ ເທວະດານັ້ນ ກ່າວດັ່ງນີ້ແລ້ວ ກໍໄດ້ຫາຍໂຕໄປໃນບ່ອນນັ້ນເອງ

[໒໗໐] ຄັ້ງນັ້ນ ເມື່ອຜ່ານຄືນນັ້ນໄປ ທ່ານພຣະສະມິດທິໄດ້ເຂົ້າໄປເຝົ້າພຣະຜູ້ມີ

ພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນສົມຄວນ ໄດຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂອກາດ ເມື່ອຄືນນີ້ຕອນໃກ້ຮຸ່ງ ຂ້າພຣະອົງລຸກຂຶ້ນເຂົ້າໄປສູ່ສະຕະໂປທະເພື່ອອາບນ້ຳ ອາບສຳເລັດແລ້ວ ໄດ້ກັບມາຢືນນຸ່ງຜ້າຜືນດຽວຕາກາໂຕໃຫ້ແຫ້ງຢູ່ ຂະນະນັ້ນ ເມື່ອຣາຕີຜ່ານໄປ ເທວະດາອົງໜຶ່ງ ມີວັນນະງົດງາມຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວສະຕະໂປທະ ເຂົ້າມາຫາຂ້າພຣະອົງຮອດບ່ອນຢູ່ ແລ້ວຢືນຢູ່ບ່ອນທີ່ສົມຄວນໄດ້ກ່າວກັບຂ້າພຣະອົງແນວນີ້ວ່າ "ພິກຂຸ ທ່ານຈື່ອຸດເທດ ແລະ ວິພັງຂອງບຸກຄົນຜູ້ມີຣາຕີດຽວຈະເລີນໄດ້ບໍ?"

ຂ້າແດ່ພຣະອົງຜູ້ຈະເລີນ ເມື່ອເທວະດານັ້ນກ່າວແນວນີ້ແລ້ວ ຂ້າພຣະອົງໄດ້ກ່າວກັບເທວະດານັ້ນວ່າ "ຜູ້ມີອາຍຸ ອາຕະມາພາບຈື່ບໍ່ໄດ້ ສ່ວນທ່ານຈື່ໄດ້ບໍ?"

ເທວະດາກ່າວວ່າ "ແມ່ນຂ້າພະເຈົ້າກໍຈື່ບໍ່ໄດ້ ອັນໜຶ່ງ ທ່ານຈື່ຄາຖາອັນສະແດງເຖິງບຸກຄົນຜູ້ມີຣາຕີດຽວຈະເລີນໄດ້ບໍ?"

ຂ້າພຣະອົງຕອບວ່າ "ອາຕະມາພາບຈື່ບໍ່ໄດ້ ສ່ວນທ່ານຈື່ໄດ້ບໍ?"

ເທວະດາກ່າວວ່າ "ພິກຂຸ ແມ່ນຂ້າພະເຈົ້າກໍຈືບໍ່ໄດ້ ຂໍທ່ານຈົ່ງສຶກສາ ຮ່ຳຮຽນແລະຈື່ອຸດເທດ ແລະ ວິພັງຂອງບຸກຄົນຜູ້ມີຣາຕີດຽວຈະເລີນເທີ້ນ ຍ້ອນວ່າອຸດເທດ ແລະ ວິພັງຂອງບຸກຄົນຜູ້ມີຣາຕີດຽວຈະເລີນ ປະກອບດ້ວຍປະໂຫຍດ ເປັນເບື້ອງຕົ້ນແຫ່ງການປະພຶດພົມມະຈັນ"

ເມື່ອແລ້ວ ເທວະດານັ້ນກ່າວດັ່ງນີ້ແລ້ວ ກໍຫາຍໂຕໄປໃນບ່ອນນັ້ນເອງ

ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງອຸດເທດ ແລະ ວິພັງຂອງບຸກຄົນຜູ້ມີຣາຕີດຽວຈະເລີນແກ່ຂ້າພຣະອົງເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸ ຖ້າເຊັ່ນນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ເມື່ອ ທ່ານພຣະສະມິດທິທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຄາຖາປະພັນນີ້ ວ່າ

"ບຸກຄົນບໍ່ຄວນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ
ບໍ່ຄວນຫວັງສິ່ງທີ່ຍັງບໍ່ມາເຖິງ
ສິ່ງໃດລ່ວງໄປແລ້ວ ສິ່ງນັ້ນກໍເປັນອັນລະໄປແລ້ວ
ແລະສິ່ງໃດທີ່ຍັງບໍ່ມາເຖິງ ສິ່ງນັ້ນກໍເປັນອັນຍັງບໍ່ມາເຖິງ
ສ່ວນບຸກຄົນໃດເຫັນແຈ້ງທຳທີ່ເປັນປັດຈຸບັນ
ບໍ່ງ່ອນແງ່ນ ບໍ່ຄອນແຄນໃນທຳນັ້ນ ໆ
ບຸກຄົນນັ້ນຄວນຈະເລີນທຳນັ້ນໃຫ້ແຈ້ງຊັດ
ບຸກຄົນຄວນທຳຄວາມພຽນຕັ້ງແຕ່ມື້ນີ້ທັນທີ
ໃຜນໍຈະຮູ້ວ່າ ຄວາມຕາຍຈັກມີໃນມື້ອື່ນນີ້
ຍ້ອນວ່າຄວາມຜ່ອນຜັນກັບມັດຈຸຣາດຜູ້ມີເສນາຫຼາຍນັ້ນ
ຍ່ອມບໍ່ມີແກ່ເຮົາທັງຫຼາຍ
ພຣະມຸນີຜູ້ສະງົບຮຽກບຸກຄົນຜູ້ມີຄວາມພຽນ
ບໍ່ຂີ້ຄ້ານທັງກາງເວັນແລະກາງຄືນ
ເຊິ່ງມີປົກກະຕິຢູ່ແນວນີ້ນັ້ນແລວ່າ "ຜູ້ມີຣາຕີດຽວຈະເລີນ"

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາ ເມື່ອຕັດຄາຖາປະພັນນີ້ແລ້ວ ຊົງລຸກຈາກພຸດທະອາດສະເດັດເຂົ້າໄປສູ່ທີ່ປະທັບ

ຄັ້ງນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປບໍ່ດົນ ພິກຂຸເຫຼົ່ານັ້ນ ໄດ້ເກີດຄວາມສົງໄສວ່າ "ທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດໂດຍຫຍໍ້ນີ້ແກ່ເຮົາທັງຫຼາຍວ່າ

"ບຸກຄົນບໍ່ຄວນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ
ບໍ່ຄວນຫວັງສິ່ງທີ່ຍັງບໍ່ມາເຖິງ
ສິ່ງໃດລ່ວງໄປແລ້ວ ສິ່ງນັ້ນກໍເປັນອັນລະໄປແລ້ວ
ແລະສິ່ງໃດທີ່ຍັງບໍ່ມາເຖິງ ສິ່ງນັ້ນກໍເປັນອັນຍັງບໍ່ມາເຖິງ
ສ່ວນບຸກຄົນໃດເຫັນແຈ້ງທຳທີ່ເປັນປັດຈຸບັນ
ບໍ່ງ່ອນແງ່ນ ບໍ່ຄອນແຄນໃນທຳນັ້ນ ໆ
ບຸກຄົນນັ້ນຄວນຈະເລີນທຳນັ້ນໃຫ້ແຈ້ງຊັດ
ບຸກຄົນຄວນທຳຄວາມພຽນຕັ້ງແຕ່ມື້ນີ້ທັນທີ
ໃຜນໍຈະຮູ້ວ່າ ຄວາມຕາຍຈັກມີໃນມື້ອື່ນນີ້
ຍ້ອນວ່າຄວາມຜ່ອນຜັນກັບມັດຈຸຣາດຜູ້ມີເສນາຫຼາຍນັ້ນ
ຍ່ອມບໍ່ມີແກ່ເຮົາທັງຫຼາຍ
ພຣະມຸນີຜູ້ສະງົບຮຽກບຸກຄົນຜູ້ມີຄວາມພຽນ
ບໍ່ຂີ້ຄ້ານທັງກາງເວັນແລະກາງຄືນ
ເຊິ່ງມີປົກກະຕິຢູ່ແນວນີ້ນັ້ນແລວ່າ "ຜູ້ມີຣາຕີດຽວຈະເລີນ"

ແລ້ວບໍ່ຊົງຊີ້ແຈ່ງເນື້ອຄວາມໃຫ້ພິດສະດານ ຊົງລຸກຈາກພຸດທະອາດສະເດັດເຂົ້າໄປສູ່ທີ່ປະທັບ ໃຜນໍ? ຈະເພິ່ງຊີ້ແຈ່ງເນື້ອຄວາມແຫ່ງອຸດເທດໂດຍຫຍໍ້ ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານໃຫ້ພິດສະດານໄດ້"

ຄັ້ງນັ້ນ ພິກຂຸເຫຼົ່ານັ້ນເກີດຄວາມຄິດຂຶ້ນວ່າ "ທ່ານພຣະມະຫາກັດຈານະນີ້ເປັນຜູ້ທີ່ພຣະສາດສະດາຊົງຍ້ອງຍໍ ທັງເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍສັນເສີນແລ້ວ ແລະ ທ່ານພຣະມະຫາກັດຈານະກໍສາມາດຈະຊີ້ແຈ່ງເນື້ອຄວາມແຫ່ງອຸດເທດໂດຍຫຍໍ້ ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານໃຫ້ພິດສະດານໄດ້ ທາງທີ່ດີ ເຮົາທັງຫຼາຍຄວນເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ແລ້ວສອບຖາມເນື້ອຄວາມນີ້ກັບທ່ານພຣະມະຫາກັດຈານະ"

[໔໗໑] ລຳດັບນັ້ນ ພິກຂຸເຫຼົ່ານັ້ນ ໄດ້ເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນສົມຄວນ ໄດ້ກ່າວກັບທ່ານພຣະມະຫາກັດຈານະວ່າ "ທ່ານກັດຈານະ ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດໂດຍຫຍໍ້ນີ້ແກ່ເຮົາທັງຫຼາຍ ວ່າ

"ບຸກຄົນບໍ່ຄວນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ

ພຣະມຸນີຜູ້ສະງົບຮຽກບຸກຄົນ

ນັ້ນແລວ່າ "ຜູ້ມີຣາຕີດຽວຈະເລີນ"

ແລ້ວບໍ່ຊົງຊີ້ແຈ່ງເນື້ອຄວາມໂດຍພິດສະດານ ຊົງລຸກຈາກພຸດທະອາດສະເດັດເຂົ້າໄປສູ່ທີ່ປະທັບ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປບໍ່ດົນ ເຮົາທັງຫຼາຍໄດ້ເກີດຄວາມສົງໄສວ່າ "ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດໂດຍຫຍໍ້ນີ້ແກ່ເຮົາທັງຫຼາຍ ວ່າ

"ບຸກຄົນບໍ່ຄວນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ

ພຣະມຸນີຜູ້ສະງົບຮຽກບຸກຄົນ

ນັ້ນແລວ່າ "ຜູ້ມີຣາຕີດຽວຈະເລີນ"

ແລ້ວບໍ່ຊົງຊີ້ແຈ່ງເນື້ອຄວາມໂດຍພິດສະດານ ຊົງລຸກຈາກພຸດທະອາດສະເດັດເຂົ້າໄປສູ່ທີ່ປະທັບ ໃຜນໍ? ຈະເພິ່ງຊີ້ແຈ່ງເນື້ອຄວາມແຫ່ງອຸດເທດໂດຍຫຍໍ້ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ບໍ່ຊົງຊີ້ແຈ່ງໂດຍພິດສະດານໃຫ້ພິດສະດານໄດ້"

ທ່ານກັດຈານະ ເຮົາທັງຫຼາຍຄິດວ່າ "ທ່ານມະຫາກັດຈານະນີ້ເປັນຜູ້ທີ່ພຣະສາດສະດາຊົງຍ້ອງຍໍ ທັງເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍສັນເສີນຍແລ້ວ ແລະທ່ານມະຫາກັດຈານະກໍສາມາດຈະຊີ້ແຈ່ງເນື້ອຄວາມແຫ່ງອຸດເທດໂດຍຫຍໍ້ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານໃຫ້ພິດສະດານໄດ້ ທາງທີ່ດີ ເຮົາທັງຫຼາຍຄວນເຂົ້າໄປຫາທ່ານມະຫາກັດຈານະຮອດບ່ອນຢູ່ ແລ້ວສອບຖາມເນື້ອຄວາມນີ້ກັບທ່ານມະຫາກັດຈານະ" ຂໍທ່ານມະຫາກັດຈານະຈົ່ງຊີ້ແຈ່ງເທີ້ນ"

ທ່ານພຣະມະຫາກັດຈານະຈຶ່ງຕອບວ່າ "ທ່ານຜູ້ມີອາຍຸທັງຫຼາຍ ປຽບຄື ບຸຣຸດຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ແນມຂ້າມເຫງົ້າແລະລຳຕົ້ນຂອງຕົ້ນໄມ້ໃຫຍ່ເຊິ່ງມີແກ່ນໄປ ເຂົາເຂົ້າໃຈວ່າແກ່ນໄມ້ຕ້ອງສະແຫວງຫາທີ່ງ່າແລະໃບ ແມ່ນສັນໃດ ຂໍ້ອຸປະໄມນີ້ກໍສັນນັ້ນ ເມື່ອພຣະສາດສະດາຊົງຜາກົດສະເພາະໜ້າທ່ານທັງຫຼາຍ ທ່ານທັງຫຼາຍກໍແນມຂ້າມພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນໄປ ແລະ ເພິ່ງເຂົ້າໃຈເນື້ອຄວາມນັ້ນວ່າຕ້ອງສອບຖາມກັບຂ້າພະ ເຈົ້າ ແທ້ຈິງ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງຮູ້ສິ່ງທີ່ຄວນຮູ້ ຊົງເຫັນສິ່ງທີ່ຄວນເຫັນ ເປັນຜູ້ມີພຣະຈັກຂຸ ມີພຣະຍານ ມີທຳ ເປັນພົມ ເປັນຜູ້ເຜີຍແຜ່ ປະກາດ ຂະຫຍາຍເນື້ອຄວາມ ເປັນຜູ້ໃຫ້ອະມະຕະທຳ ເປັນເຈົ້າຂອງທຳ ເປັນພຣະຕະຖາຄົດ ແລະ ເວລານີ້ກໍເປັນເວລາອັນ

ສົມຄວນທີ່ທ່ານທັງຫຼາຍ ຈະທູນຖາມເນື້ອຄວາມນີ້ກັບພຣະອົງ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍຊົງຕອບແນວໃດ ທ່ານທັງຫຼາຍເພິ່ງຊົງຈຳໄວ້ແນວນັ້ນເທີ້ນ"

ພິກຂຸເຫຼົ່ານັ້ນໄດ້ກ່າວຕອບວ່າ "ທ່ານກັດຈານະ ເປັນຄວາມຈິງທີ່ພຣະຜູ້ມີພຣະພາກເຈົ້າຊົງຮູ້ສິ່ງທີ່ຄວນຮູ້ ຊົງເຫັນສິ່ງທີ່ຄວນເຫັນ ເປັນຜູ້ມີພຣະຈັກຂຸ ມີພຣະຍານ ມີທຳ ເປັນພົມ ເປັນຜູ້ເຜີຍແຜ່ ປະກາດ ຂະຫຍາຍເນື້ອຄວາມ ເປັນຜູ້ໃຫ້ອະມະຕະທຳ ເປັນເຈົ້າຂອງທຳ ເປັນພຣະຕະຖາຄົດ ແລະ ເວລານີ້ກໍເປັນເວລາອັນສົມຄວນທີ່ເຮົາທັງຫຼາຍ ຈະທູນຖາມເນື້ອຄວາມນີ້ກັບພຣະອົງ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍຊົງຕອບແນວໃດ ເຮົາທັງຫຼາຍຈະເພິ່ງຊົງຈຳເນື້ອຄວາມນັ້ນໄວ້ແນວນັ້ນ ອັນໜຶ່ງ ທ່ານພຣະມະຫາກັດຈານະເປັນຜູ້ທີ່ພຣະສາດສະດາຊົງຍ້ອງຍໍ ທັງເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍສັນເສີນແລ້ວ ແລະທ່ານພຣະມະຫາກັດຈານະສາມາດຈະຊີ້ແຈ່ງເນື້ອຄວາມແຫ່ງອຸດເທດໂດຍຫຍໍ້ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານໃຫ້ພິດສະດານໄດ້ ຂໍທ່ານພຣະມະຫາກັດຈານະບໍ່ຕ້ອງໜັກໃຈ ຊີ້ແຈ່ງເທີ້ນ"

ທ່ານພຣະມະຫາກັດຈານະກ່າວວ່າ "ຖ້າເຊັ່ນນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ຂ້າພະເຈົ້າຈັກກ່າວ" ພິກຂຸເຫຼົ່ານັ້ນຮັບຄຳແລ້ວ

ທ່ານພຣະມະຫາກັດຈານະຈຶ່ງໄດ້ກ່າວວ່າ "ທ່ານຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດໂດຍຫຍໍ້ໄວ້ ວ່າ

"ບຸກຄົນບໍ່ຄວນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ

ฯລฯ

ພຣະມຸນີຜູ້ສະງົບຮຽກບຸກຄົນ

ฯລฯ

ນັ້ນແລວ່າ "ຜູ້ມີຣາຕີດຽວຈະເລີນ"

ແລ້ວບໍ່ຊົງຊີ້ແຈ່ງເນື້ອຄວາມໂດຍພິດສະດານ ຊົງລຸກຈາກພຸດທະອາດສະເດັດເຂົ້າໄປສູ່ທີ່ປະທັບ ທ່ານຜູ້ມີອາຍຸທັງຫຼາຍ ຂ້າພະເຈົ້າຮູ້ທົ່ວເຖິງເນື້ອຄວາມແຫ່ງອຸດເທດໂດຍຫຍໍ້ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານ ໂດຍພິດສະດານແນວນີ້

[໔໗໔] ບຸກຄົນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ ເປັນແນວໃດ?

ຄື ວິນຍານມີຄວາມມັດພັນກັບສັນທະຣາຄະໃນຈັກຂຸແລະຮູບນັ້ນວ່າ "ໃນອະດີດ ເຮົາມີຈັກຂຸແນວນີ້ ມີຮູບແນວນີ້" ຍ້ອນວິນຍານມີຄວາມມັດພັນກັບສັນທະຣາຄະ ບຸກຄົນຈຶ່ງຍິນດີຈັກຂຸແລະຮູບນັ້ນ ບຸກຄົນເມື່ອຍິນດີຈັກຂຸແລະຮູບນັ້ນ ຈຶ່ງຊື່ວ່າຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ

ວິນຍານມີຄວາມມັດພັນກັບສັນທະຣາຄະໃນໂສຕະ ແລະ ສຽງນັ້ນວ່າ "ໃນອະດີດ ເຮົາມີໂສຕະແບບນີ້ ມີສຽງແບບນີ້" ຯລຯ

ວິນຍານມີຄວາມມັດພັນກັບສັນທະຣາຄະໃນຄານະ ແລະ ກິ່ນນັ້ນວ່າ "ໃນອະດີດ ເຮົາມີຄານະແບບນີ້ ມີກິ່ນແບບນີ້" ຯລຯ

ວິນຍານມີຄວາມມັດພັນກັບສັນທະຣາຄະໃນຊິວຫາ ແລະ ຣົດນັ້ນວ່າ "ໃນອະດີດ ເຮົາມີຊິວຫາແບບນີ້ ມີຣົດແບບນີ້" ຯລຯ

ວິນຍານມີຄວາມມັດພັນກັບສັນທະຣາຄະໃນກາຍ ແລະ ໂຜດຖັບພະນັ້ນວ່າ "ໃນອະດີດ ເຮົາມີກາຍແບບນີ້ ມີໂຜດຖັບພະແບບນີ້" ຯລຯ

ວິນຍານມີຄວາມມັດພັນກັບສັນທະຣາຄະໃນມະໂນ ແລະ ທຳມາຣົມນັ້ນວ່າ "ໃນອະດີດ ເຮົາມີມະໂນແບບນີ້ ມີທຳມາຣົມແບບນີ້" ຍ້ອນວິນຍານມີຄວາມມັດພັນກັບສັນທະຣາຄະ ບຸກຄົນຈຶ່ງຍິນດີມະໂນແລະທຳມາຣົມນັ້ນ ບຸກຄົນເມື່ອຍິນດີມະໂນແລະທຳມາຣົມນັ້ນຈຶ່ງຊື່ວ່າຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ

ທ່ານຜູ້ມີອາຍຸທັງຫຼາຍ ບຸກຄົນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ ເປັນແບບນີ້ແລ

ບຸກຄົນບໍ່ຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ ເປັນແບບໃດ?

ຄື ວິນຍານບໍ່ມີຄວາມມັດພັນກັບສັນທະຣາຄະໃນຈັກຂຸແລະຮູບນັ້ນວ່າ "ໃນອະດີດ ເຮົາມີຈັກຂຸແບບນີ້ ມີຮູບແບບນີ້" ຍ້ອນວິນຍານບໍ່ມີຄວາມມັດພັນກັບສັນທະຣາຄະ ບຸກຄົນຈຶ່ງບໍ່ຍິນດີຈັກຂຸແລະຮູບນັ້ນ ບຸກຄົນເມື່ອບໍ່ຍິນດີຈັກຂຸແລະຮູບນັ້ນ ຈຶ່ງຊື່ວ່າບໍ່ຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ

ວິນຍານບໍ່ມີຄວາມມັດພັນກັບສັນທະຣາຄະໃນໂສຕະແລະສຽງນັ້ນວ່າ "ໃນອະດີດ ເຮົາມີໂສຕະແບບນີ້ ມີສຽງແບບນີ້" ຯລຯ

ວິນຍານບໍ່ມີຄວາມມັດພັນກັບສັນທະຣາຄະໃນຄານະແລະກິ່ນນັ້ນວ່າ "ໃນອະດີດ ເຮົາມີຄານະແບບນີ້ ມີກິ່ນແບບນີ້" ຯລຯ

ວິນຍານບໍ່ມີຄວາມມັດພັນກັບສັນທະຣາຄະໃນຊິວຫາແລະຣົດນັ້ນວ່າ "ໃນອະດີດ ເຮົາມີຊິວຫາແບບນີ້ ມີຣົດແບບນີ້" ຯລຯ

ວິນຍານບໍ່ມີຄວາມມັດພັນກັບສັນທະຣາຄະໃນກາຍແລະໂຜດຖັບພະນັ້ນວ່າ "ໃນອະດີດ ເຮົາມີກາຍແບບນີ້ ມີໂຜດຖັບພະແບບນີ້" ຯລຯ

ວິນຍານບໍ່ມີຄວາມມັດພັນກັບສັນທະຣາຄະໃນມະໂນແລະທຳມາຣົມນັ້ນວ່າ "ໃນອະດີດ ເຮົາມີມະໂນແບບນີ້ ມີທຳມາຣົມແບບນີ້"

ຍ້ອນວິນຍານບໍ່ມີຄວາມມັດພັນກັບສັນທະຣາຄະ ບຸກຄົນຈຶ່ງບໍ່ຍິນດີມະໂນແລະທຳມາຣົມ

ນັ້ນ ບຸກຄົນເມື່ອບໍ່ຍິນດີມະໂນແລະທຳມາຣົມນັ້ນ ຈຶ່ງຊື່ວ່າບໍ່ຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ

ທ່ານຜູ້ມີອາຍຸທັງຫຼາຍ ບຸກຄົນບໍ່ຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ ເປັນແນວນີ້ແລ

[໔໗໓] ບຸກຄົນຫວັງສິ່ງທີ່ຍັງບໍ່ມາເຖິງ ເປັນແນວໃດ?

ຄື ບຸກຄົນຕັ້ງຈິດເພື່ອຈະໄດ້ສິ່ງທີ່ຕົນຍັງບໍ່ໄດ້ວ່າ "ໃນອະນາຄົດ ເຮົາເພິ່ງມີຈັກຂຸແນວນີ້ ມີຮູບແນວນີ້" ຍ້ອນຄວາມຕັ້ງຈິດເປັນປັດໄຈ ບຸກຄົນຈຶ່ງຍິນດີຈັກຂຸແລະຮູບນັ້ນ ບຸກຄົນເມື່ອຍິນດີຈັກຂຸແລະຮູບນັ້ນ ຈຶ່ງຊື່ວ່າຫວັງສິ່ງທີ່ຍັງບໍ່ມາເຖິງ

ຕັ້ງຈິດເພື່ອຈະໄດ້ສິ່ງທີ່ຕົນຍັງບໍ່ໄດ້ວ່າ "ໃນອະນາຄົດ ເຮົາເພິ່ງມີໂສຕະແນວນີ້ ມີສຽງແນວນີ້" ຯລຯ

ຕັ້ງຈິດເພື່ອຈະໄດ້ສິ່ງທີ່ຕົນຍັງບໍ່ໄດ້ວ່າ "ໃນອະນາຄົດ ເຮົາເພິ່ງມີຄານະແນວນີ້ ມີກິ່ນແນວນີ້" ຯລຯ

ຕັ້ງຈິດເພື່ອຈະໄດ້ສິ່ງທີ່ຕົນຍັງບໍ່ໄດ້ວ່າ "ໃນອະນາຄົດ ເຮົາເພິ່ງມີຊິວຫາແນວນີ້ ມີຣົດແນວນີ້" ຯລຯ

ຕັ້ງຈິດເພື່ອຈະໄດ້ສິ່ງທີ່ຕົນຍັງບໍ່ໄດ້ວ່າ "ໃນອະນາຄົດ ເຮົາເພິ່ງມີກາຍແນວນີ້ ມີໂຜດຖັບພະແນວນີ້" ຯລຯ

ຕັ້ງຈິດເພື່ອຈະໄດ້ສິ່ງທີ່ຕົນຍັງບໍ່ໄດ້ວ່າ "ໃນອະນາຄົດ ເຮົາເພິ່ງມີມະໂນແນວນີ້ ມີທຳມາຣົມແນວນີ້" ຍ້ອນຄວາມຕັ້ງຈິດເປັນປັດໄຈ ບຸກຄົນຈຶ່ງຍິນດີມະໂນແລະທຳມາຣົມນັ້ນ ບຸກຄົນເມື່ອຍິນດີມະໂນແລະທຳມາຣົມນັ້ນ ຈຶ່ງຊື່ວ່າ ຫວັງສິ່ງທີ່ຍັງບໍ່ມາເຖິງ

ທ່ານຜູ້ມີອາຍຸທັງຫຼາຍ ບຸກຄົນຫວັງສິ່ງທີ່ຍັງບໍ່ມາເຖິງ ເປັນແນວນີ້ແລ

ບຸກຄົນບໍ່ຫວັງສິ່ງທີ່ຍັງບໍ່ມາເຖິງ ເປັນແນວໃດ?

ຄື ບຸກຄົນບໍ່ຕັ້ງຈິດເພື່ອຈະໄດ້ສິ່ງທີ່ຕົນຍັງບໍ່ໄດ້ວ່າ "ໃນອະນາຄົດ ເຮົາເພິ່ງມີຈັກຂຸແນວນີ້ ມີຮູບແນວນີ້" ຍ້ອນຄວາມບໍ່ຕັ້ງຈິດເປັນປັດໄຈ ບຸກຄົນຈຶ່ງບໍ່ຍິນດີຈັກຂຸແລະຮູບນັ້ນ ບຸກຄົນເມື່ອບໍ່ຍິນດີຈັກຂຸແລະຮູບນັ້ນ ຈຶ່ງຊື່ວ່າບໍ່ຫວັງສິ່ງທີ່ຍັງບໍ່ມາເຖິງ

ບໍ່ຕັ້ງຈິດເພື່ອຈະໄດ້ສິ່ງທີ່ຕົນຍັງບໍ່ໄດ້ວ່າ "ໃນອະນາຄົດ ເຮົາເພິ່ງມີໂສຕະແນວນີ້ ມີສຽງແນວນີ້" ຯລຯ

ບໍ່ຕັ້ງຈິດເພື່ອຈະໄດ້ສິ່ງທີ່ຕົນຍັງບໍ່ໄດ້ວ່າ "ໃນອະນາຄົດ ເຮົາເພິ່ງມີຄານະແນວນີ້ ມີກິ່ນແນວນີ້" ຯລຯ

ບໍ່ຕັ້ງຈິດເພື່ອຈະໄດ້ສິ່ງທີ່ຕົນຍັງບໍ່ໄດ້ວ່າ "ໃນອະນາຄົດ ເຮົາເພິ່ງມີຊິວຫາແນວນີ້ ມີຣົດແນວນີ້" ຯລຯ

ບໍ່ຕັ້ງຈິດເພື່ອຈະໄດ້ສິ່ງທີ່ຕົນຍັງບໍ່ໄດ້ວ່າ “ໃນອະນາຄົດ ເຮົາເພິ່ງມີກາຍແນວນີ້ ມີໂຜດຖັບພະແນວນີ້” ຯລຯ

ບໍ່ຕັ້ງຈິດເພື່ອຈະໄດ້ສິ່ງທີ່ຕົນຍັງບໍ່ໄດ້ວ່າ “ໃນອະນາຄົດ ເຮົາເພິ່ງມີມະໂນແນວນີ້ ມີທຳມາຣົມແນວນີ້” ຍ້ອນຄວາມບໍ່ຕັ້ງຈິດເປັນປັດໄຈ ບຸກຄົນຈຶ່ງບໍ່ຍິນດີມະໂນ ແລະ ທຳມາຣົມນັ້ນ ບຸກຄົນເມື່ອບໍ່ຍິນດີມະໂນແລະທຳມາຣົມນັ້ນ ຈຶ່ງຊື່ວ່າບໍ່ຫວັງສິ່ງທີ່ຍັງບໍ່ມາເຖິງ

ທ່ານຜູ້ມີອາຍຸທັງຫຼາຍ ບຸກຄົນບໍ່ຫວັງສິ່ງທີ່ຍັງບໍ່ມາເຖິງ ເປັນແນວນີ້ແລ

[໔໗໔] ບຸກຄົນງ່ອນແງ່ນໃນທຳທີ່ເປັນປັດຈຸບັນ ເປັນແນວໃດ?

ຄື ວິນຍານມີຄວາມມັດພັນກັບສັນທະຣາຄະໃນຈັກຂຸ ແລະ ຮູບທັງ ໔ ແນວທີ່ເປັນປັດຈຸບັນນັ້ນ ຍ້ອນວິນຍານມີຄວາມມັດພັນກັບສັນທະຣາຄະ ບຸກຄົນຈຶ່ງຍິນດີຈັກຂຸແລະຮູບນັ້ນ ບຸກຄົນເມື່ອຍິນດີຈັກຂຸແລະຮູບ ຈຶ່ງຊື່ວ່າງ່ອນແງ່ນໃນທຳທີ່ເປັນປັດຈຸບັນ

ວິນຍານມີຄວາມມັດພັນກັບສັນທະຣາຄະໃນ ໂສຕະແລະສຽງ ຯລຯ
ວິນຍານມີຄວາມມັດພັນກັບສັນທະຣາຄະໃນ ຄານະແລະກິ່ນ ຯລຯ
ວິນຍານມີຄວາມມັດພັນກັບສັນທະຣາຄະໃນ ຊິວຫາແລະຣົດ ຯລຯ
ວິນຍານມີຄວາມມັດພັນກັບສັນທະຣາຄະໃນ ກາຍແລະໂຜດຖັບພະ ຯລຯ

ວິນຍານມີຄວາມມັດພັນກັບສັນທະຣາຄະໃນມະໂນແລະທຳມາຣົມທັງ ໔ ແນວທີ່ເປັນປັດຈຸບັນນັ້ນຍ້ອນວິນຍານມີຄວາມມັດພັນກັບສັນທະຣາຄະ ບຸກຄົນຈຶ່ງຍິນດີມະໂນແລະທຳມາຣົມນັ້ນ ບຸກຄົນເມື່ອຍິນດີມະໂນແລະທຳມາຣົມນັ້ນ ຈຶ່ງຊື່ວ່າງ່ອນແງ່ນໃນທຳທີ່ເປັນປັດຈຸບັນ

ທ່ານຜູ້ມີອາຍຸທັງຫຼາຍ ບຸກຄົນງ່ອນແງ່ນໃນທຳທີ່ເປັນປັດຈຸບັນ ເປັນແນວນີ້ແລ

ບຸກຄົນບໍ່ງ່ອນແງ່ນໃນທຳທີ່ເປັນປັດຈຸບັນ ເປັນແນວໃດ?

ຄື ວິນຍານບໍ່ມີຄວາມມັດພັນກັບສັນທະຣາຄະໃນຈັກຂຸແລະຮູບທັງ ໔ ແນວທີ່ເປັນປັດຈຸບັນນັ້ນ ຍ້ອນວິນຍານບໍ່ມີຄວາມມັດພັນກັບສັນທະຣາຄະ ບຸກຄົນຈຶ່ງບໍ່ຍິນດີຈັກຂຸແລະຮູບນັ້ນ ບຸກຄົນເມື່ອບໍ່ຍິນດີຈັກຂຸແລະຮູບນັ້ນ ຈຶ່ງຊື່ວ່າ ບໍ່ງ່ອນແງ່ນໃນທຳທີ່ເປັນປັດຈຸບັນ

ວິນຍານບໍ່ມີຄວາມມັດພັນກັບສັນທະຣາຄະໃນໂສຕະແລະສຽງ ຯລຯ
ວິນຍານບໍ່ມີຄວາມມັດພັນກັບສັນທະຣາຄະໃນຄານະແລະກິ່ນ ຯລຯ
ວິນຍານບໍ່ມີຄວາມມັດພັນກັບສັນທະຣາຄະໃນຊິວຫາແລະຣົດ ຯລຯ
ວິນຍານບໍ່ມີຄວາມມັດພັນກັບສັນທະຣາຄະໃນກາຍແລະໂຜດຖັບພະ ຯລຯ

ວິນຍານບໍ່ມີຄວາມມັດພັນກັບສັນທະຣາຄະໃນມະໂນແລະທຳມາຣົມທັງ ໔ ແນວທີ່ເປັນ

ປັດຈຸບັນນັ້ນ ຍ້ອນວິນຍານບໍ່ມີຄວາມມັດພັນກັບສັນທະຣາຄະ ບຸກຄົນຈຶ່ງບໍ່ຍິນດີມະໂນແລະທຳ ມາຣົມນັ້ນ ບຸກຄົນເມື່ອບໍ່ຍິນດີມະໂນແລະທຳມາຣົມນັ້ນ ຈຶ່ງຊື່ວ່າບໍ່ງ່ອນແງ່ນໃນທຳທີ່ເປັນປັດຈຸບັນ

ທ່ານຜູ້ມີອາຍຸທັງຫຼາຍ ບຸກຄົນບໍ່ງ່ອນແງ່ນໃນທຳທີ່ເປັນປັດຈຸບັນ ເປັນແນວນີ້ແລ

[໔໗໕] ທ່ານຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງອຸດເທດໂດຍຫຍໍ້ໄວ້ ແກ່ເຮົາທັງຫຼາຍ ວ່າ

"ບຸກຄົນບໍ່ຄວນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ

ຯລຯ

ພຣະມຸນີຜູ້ສະງົບຮຽກບຸກຄົນ

ຯລຯ

ນັ້ນແລວ່າ "ຜູ້ມີຣາຕີດຽວຈະເລີນ"

ແລ້ວບໍ່ຊົງຊີ້ແຈ່ງເນື້ອຄວາມໂດຍພິດສະດານ ຊົງລຸກຈາກພຸດທະອາດ ສະເດັດເຂົ້າໄປສູ່ ທີ່ປະທັບ

ທ່ານຜູ້ມີອາຍຸທັງຫຼາຍ ຂ້າພະເຈົ້າຮູ້ທົ່ວເຖິງເນື້ອຄວາມແຫ່ງອຸດເທດໂດຍຫຍໍ້ທີ່ພຣະຜູ້ ມີພຣະພາກເຈົ້າຊົງສະແດງໄວ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານ ໂດຍພິດສະດານແນວນີ້ ທ່ານທັງ ຫຼາຍເມື່ອຫວັງ ເພິ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າແແລ້ວທູນຖາມເນື້ອຄວາມນັ້ນ ພຣະອົງ ຊົງຕອບແນວໃດ ທ່ານທັງຫຼາຍເພິ່ງຊົງຈຳໄວ້ແນວນັ້ນເທີ້ນ"

ຄັ້ງນັ້ນ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນຍິນດີ ອະນຸໂມທະນາພາສິດຂອງທ່ານພຣະ ມະຫາກັດຈານະແລ້ວ ລຸກຈາກອາສະນະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍ ອະພິວາດແລ້ວນັ່ງຢູ່ບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ພຣະອົງຜູ້ ຈະເລີນ ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດໂດຍຫຍໍ້ແກ່ຂ້າພຣະອົງທັງຫຼາຍວ່າ

"ບຸກຄົນບໍ່ຄວນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ

ຯລຯ

ພຣະມຸນີຜູ້ສະງົບຮຽກບຸກຄົນ

ຯລຯ

ນັ້ນແລວ່າ "ຜູ້ມີຣາຕີດຽວຈະເລີນ"

ແລ້ວບໍ່ຊົງຊີ້ແຈ່ງເນື້ອຄວາມໂດຍພິດສະດານ ຊົງລຸກຈາກພຸດທະອາດສະເດັດເຂົ້າໄປສູ່ທີ່ ປະທັບເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປບໍ່ດົນ ຂ້າພຣະອົງທັງຫຼາຍໄດ້ເກີດຄວາມ

ສົງໄສວ່າ "ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດໂດຍຫຍໍ້ແກ່ເຮົາທັງຫຼາຍ ວ່າ

ບຸກຄົນບໍ່ຄວນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ
ບໍ່ຄວນຫວັງສິ່ງທີ່ຍັງບໍ່ມາເຖິງ
ສິ່ງໃດລ່ວງໄປແລ້ວ ສິ່ງນັ້ນກໍເປັນອັນລະໄປແລ້ວ
ແລະສິ່ງໃດທີ່ຍັງບໍ່ມາເຖິງ ສິ່ງນັ້ນກໍເປັນອັນຍັງບໍ່ມາເຖິງ
ສ່ວນບຸກຄົນໃດເຫັນແຈ້ງທຳທີ່ເປັນປັດຈຸບັນ
ບໍ່ງ່ອນແງ່ນ ບໍ່ຄອນແຄນໃນທຳນັ້ນ ໆ
ບຸກຄົນນັ້ນຄວນຈະເລີນທຳນັ້ນໃຫ້ແຈ້ງຊັດ
ບຸກຄົນຄວນທຳຄວາມພຽນຕັ້ງແຕ່ມື້ນີ້ທັນທີ
ໃຜນໍຈະຮູ້ວ່າ ຄວາມຕາຍຈັກມີໃນມື້ອື່ນນີ້
ຍ້ອນວ່າຄວາມຜ່ອນຜັນກັບມັດຈຸຣາດຜູ້ມີເສນາຫຼາຍນັ້ນ
ຍ່ອມບໍ່ມີແກ່ເຮົາທັງຫຼາຍ
ພຣະມຸນີຜູ້ສະງົບຮຽກບຸກຄົນຜູ້ມີຄວາມພຽນ
ບໍ່ຂີ້ຄ້ານທັງກາງເວັນແລະກາງຄືນ
ເຊິ່ງມີປົກກະຕິຢູ່ແນວນີ້ນັ້ນແລວ່າ "ຜູ້ມີຣາຕີດຽວຈະເລີນ"

ໃຜນໍ? ຈະເພິ່ງຊີ້ແຈ່ງເນື້ອຄວາມແຫ່ງອຸດເທດໂດຍຫຍໍ້ ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ ບໍ່ຊົງຊີ້ແຈ່ງໄວ້ໂດຍພິດສະດານໃຫ້ພິດສະດານໄດ້ ຂ້າພຣະອົງທັງຫຼາຍໄດ້ຄິດວ່າ "ທ່ານພຣະມະຫາກັດຈານະນີ້ແລ ເປັນຜູ້ທີ່ພຣະສາດສະດາຊົງຍ້ອງຍໍ ທັງເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍສັນເສີນແລ້ວ ແລະທ່ານພຣະມະຫາກັດຈານະກໍສາມາດຈະຊີ້ແຈ່ງເນື້ອຄວາມແຫ່ງອຸດເທດໂດຍຫຍໍ້ ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ ບໍ່ຊົງຊີ້ແຈ່ງໄວ້ໂດຍພິດສະດານໃຫ້ພິດສະດານໄດ້ ທາງທີ່ດີ ເຮົາທັງຫຼາຍຄວນເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ແລ້ວເພິ່ງສອບຖາມເນື້ອຄວາມນີ້ກັບທ່ານພຣະມະຫາກັດຈານະ" ຄັ້ງນັ້ນ ຂ້າພຣະອົງທັງຫຼາຍໄດ້ພາກັນເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ແລ້ວສອບຖາມເນື້ອຄວາມນີ້ກັບທ່ານພຣະມະຫາກັດຈານະ ທ່ານພຣະມະຫາກັດຈານະໄດ້ຊີ້ແຈ່ງເນື້ອຄວາມແກ່ຂ້າພຣະອົງທັງຫຼາຍດ້ວຍອາການເຫຼົ່ານີ້ ດ້ວຍບົດເຫຼົ່ານີ້ ດ້ວຍພະຍັນຊະນະເຫຼົ່ານີ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ມະຫາກັດຈານະເປັນບັນດິດ ພິກຂຸທັງຫຼາຍ ມະຫາກັດຈານະເປັນຜູ້ມີປັນຍາຫຼາຍ ເຖິງວ່າທ່ານທັງຫຼາຍຈະເພິ່ງສອບຖາມເນື້ອຄວາມນີ້ກັບເຮົາ ເຮົາກໍຈະເພິ່ງຕອບເນື້ອຄວາມນັ້ນເໝືອນກັບທີ່ມະຫາກັດຈານະຕອບ ເລື້ອງນີ້ມີເນື້ອຄວາມດັ່ງນີ້ແລ ທ່ານທັງຫຼາຍຈົ່ງຊົງຈຳເລື້ອງນັ້ນໄວ້ແນວນີ້ເທີ້ນ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ມະຫາກັດຈານະພັດເທກະຣັດຕະສູດທີ ໓ ຈົບ**

# ໔. ໂລມະສະກັງຄິຍະພັດເທກະຣັດຕະສູດ

## ວ່າດ້ວຍຊົງສະແດງເລື້ອງຜູ້ມີຣາຕີດຽວຈະເລີນແກ່ພຣະໂລມະສະກັງຄິຍະ

[໔໗໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນແລ ທ່ານພຣະໂລມະສະກັງຄິຍະ ຢູ່ທີ່ນິໂຄທາຣາມ ເຂດເມືອງບິນລະພັດ ແຄວ້ນສັກກະ ຂະນະນັ້ນ ເມື່ອຣາຕີຜ່ານໄປ ຈັນທະນະເທບພະບຸດ ມີວັນນະງົດງາມຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວນິໂຄທາຣາມ ເຂົ້າໄປຫາທ່ານພຣະໂລມະສະກັງຄິຍະຮອດບ່ອນຢູ່ ແລ້ວຢືນຢູ່ບ່ອນສົມຄວນ ໄດ້ກ່າວກັບທ່ານພຣະໂລມະສະກັງຄິຍະແນວນີ້ວ່າ "ພິກຂຸ ທ່ານຈື່ອຸດເທດ ແລະ ວິພັງຂອງບຸກຄົນຜູ້ມີຣາຕີດຽວຈະເລີນໄດ້ບໍ?"

ທ່ານພຣະໂລມະສະກັງຄິຍະກ່າວວ່າ "ອາຕະມາພາບຈືບໍ່ໄດ້ ສ່ວນທ່ານຈືອຸດເທດ ແລະ ວິພັງຂອງບຸກຄົນຜູ້ມີຣາຕີດຽວຈະເລີນໄດ້ບໍ?"

"ແມ່ນຂ້າພະເຈົ້າກໍຈື່ບໍ່ໄດ້ ອັນໜຶ່ງ ທ່ານຈືຄາຖາທີ່ສະແດງເຖິງບຸກຄົນຜູ້ມີຣາຕີດຽວຈະເລີນໄດ້ບໍ?"

"ອາຕະມາພາບຈື່ບໍ່ໄດ້ ສ່ວນທ່ານຈືໄດ້ບໍ?"
"ຂ້າພະເຈົ້າຈື່ໄດ້"
"ກໍທ່ານຈື່ໄດ້ແນວໃດນໍ?"

"ພິກຂຸ ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປັນຖຸກຳພົນສິລາອາດທີ່ຄວງໄມ້ປາຣິສັດຕະກະ ໃນໝູ່ເທບຊັ້ນຕາວະຕິງສາໃນບ່ອນນັ້ນເອງ ພຣະຜູ້ມີພຣະພາກເຈົ້າໄດ້ຕັດອຸດເທດແລະວິພັງຂອງບຸກຄົນຜູ້ມີຣາຕີດຽວຈະເລີນແກ່ເທບຊັ້ນຕາວະຕິງສາ ວ່າ

ບຸກຄົນບໍ່ຄວນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ

ບໍ່ຄວນຫວັງສິ່ງທີ່ຍັງບໍ່ມາເຖິງ
ສິ່ງໃດລ່ວງໄປແລ້ວ ສິ່ງນັ້ນກໍເປັນອັນລະໄປແລ້ວ
ແລະສິ່ງໃດທີ່ຍັງບໍ່ມາເຖິງ ສິ່ງນັ້ນກໍເປັນອັນຍັງບໍ່ມາເຖິງ
ສ່ວນບຸກຄົນໃດເຫັນແຈ້ງທຳທີ່ເປັນປັດຈຸບັນ
ບໍ່ງ່ອນແງ່ນ ບໍ່ຄອນແຄນໃນທຳນັ້ນ ໆ
ບຸກຄົນນັ້ນຄວນຈະເລີນທຳນັ້ນໃຫ້ແຈ້ງຊັດ
ບຸກຄົນຄວນທຳຄວາມພຽນຕັ້ງແຕ່ມື້ນີ້ທັນທີ
ໃຜນໍຈະຮູ້ວ່າ ຄວາມຕາຍຈັກມີມາໃນມື້ອື່ນນີ້
ຍ້ອນວ່າຄວາມຜ່ອນຜັນກັບມັດຈຸຣາດຜູ້ມີເສນາຫຼາຍນັ້ນ
ຍ່ອມບໍ່ມີແກ່ເຮົາທັງຫຼາຍ
ພຣະມຸນີຜູ້ສະງົບຮຽກບຸກຄົນຜູ້ມີຄວາມພຽນ
ບໍ່ຂີ້ຄ້ານທັງກາງເວັນແລະກາງຄືນ
ເຊິ່ງມີປົກກະຕິຢູ່ແນວນີ້ນັ້ນແລວ່າ "ຜູ້ມີຣາຕີດຽວຈະເລີນ"

ພິກຂຸ ຂ້າພະເຈົ້າຈື່ຄາຖາທີ່ສະແດງເຖິງບຸກຄົນຜູ້ມີຣາຕີດຽວຈະເລີນໄດ້ຢ່າງນີ້ ຂໍທ່ານຈົ່ງສຶກສາ ຮໍ່າຮຽນ ແລະ ຈື່ອຸດເທດແລະວິພັງຂອງບຸກຄົນຜູ້ມີຣາຕີດຽວຈະເລີນເທີ້ນ ຍ້ອນວ່າອຸດເທດແລະວິພັງຂອງບຸກຄົນຜູ້ມີຣາຕີດຽວຈະເລີນ ປະກອບດ້ວຍປະໂຫຍດ ເປັນເບື້ອງຕົ້ນແຫ່ງການປະພຶດພົມມະຈັນ"

ເມື່ອຈັນທະນະເທບພະບຸດກ່າວດັ່ງນີ້ແລ້ວ ກໍຫາຍໂຕໄປໃນບ່ອນນັ້ນເອງ

[໔໗໓] ຄັ້ງນັ້ນແລ ທ່ານພຣະໂລມະສະກັງຄິຍະ ເມື່ອຜ່ານຄືນນັ້ນໄປ ຈຶ່ງຖືຮັກສາເສນາສະນະ ຖືບາດ ແລະ ຈີວອນຫຼີກຈາຣິກໄປທາງນະຄອນສາວັດຖີ ເມື່ອຈາຣິກໄປໂດຍລຳດັບ ໄດ້ເຂົ້າໄປສູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ສະໄໝໜຶ່ງ ຂ້າພຣະອົງຢູ່ທີ່ນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວ້ນສັກກະ ຂະນະນັ້ນ ເມື່ອຣາຕີຜ່ານໄປ ເທບພະບຸດອົງໜຶ່ງ ມີວັນນະງົດງາມຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວນິໂຄທາຣາມ ເຂົ້າມາຫາຂ້າພຣະອົງຮອດບ່ອນຢູ່ ແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບຂ້າພຣະອົງວ່າ "ພິກຂຸ ທ່ານຈື່ອຸດເທດແລະວິພັງຂອງບຸກຄົນຜູ້ມີຣາຕີດຽວຈະເລີນໄດ້ບໍ?"

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອເທບພະບຸດນັ້ນກ່າວແນວນີ້ແລ້ວ ຂ້າພຣະອົງໄດ້ກ່າວກັບ

ເທບພະບຸດນັ້ນວ່າ "ຜູ້ມີອາຍຸ ອາຕະມາພາບຈື່ບໍ່ໄດ້ ສ່ວນທ່ານຈື່ໄດ້ບໍ?"

ເທບພະບຸດກ່າວວ່າ "ແມ່ນຂ້າພະເຈົ້າກໍຈື່ບໍ່ໄດ້ ອັນໜຶ່ງ ທ່ານຈື່ຄາຖາທີ່ສະແດງເຖິງບຸກຄົນຜູ້ມີຣາຕີດຽວຈະເລີນໄດ້ບໍ?"

ຂ້າພຣະອົງຕອບວ່າ "ອາຕະມາພາບຈື່ບໍ່ໄດ້ ສ່ວນທ່ານຈື່ໄດ້ບໍ?"
"ຂ້າພະເຈົ້າຈື່ໄດ້"
"ຜູ້ມີອາຍຸ ກໍທ່ານຈື່ໄດ້ແນວໃດນໍ?"

"ພິກຂຸ ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປັນດຸກໍາພົນສີລາອາດທີ່ຄວງໄມ້ປາຣິສັດຕະກະ ໃນໝູ່ເທບຊັ້ນຕາວະຕິງສາ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດອຸດເທດ ແລະວິພັງຂອງບຸກຄົນຜູ້ມີຣາຕີດຽວຈະເລີນແກ່ເທບຊັ້ນຕາວະຕິງສາ ວ່າ

"ບຸກຄົນບໍ່ຄວນຄໍານຶງເຖິງສິ່ງທີ່ລ່ວງໄປແລ້ວ
ฯລฯ
ພຣະມຸນີຜູ້ສະງົບຮຽກບຸກຄົນ
ฯລฯ
ນັ້ນແລວ່າ "ຜູ້ມີຣາຕີດຽວຈະເລີນ"

ພິກຂຸ ຂ້າພະເຈົ້າຈື່ຄາຖາທີ່ສະແດງເຖິງບຸກຄົນຜູ້ມີຣາຕີດຽວຈະເລີນໄດ້ຢ່າງນີ້ແລ ຂໍທ່ານຈົ່ງສຶກສາ ຮໍ່າຮຽນ ແລະ ຊົງຈໍາອຸດເທດແລະວິພັງຂອງບຸກຄົນຜູ້ມີຣາຕີດຽວ

ຈະເລີນເທີ້ນ ຍ້ອນວ່າອຸດເທດແລະວິພັງຂອງບຸກຄົນຜູ້ມີຣາຕີດຽວຈະເລີນ ປະກອບດ້ວຍປະໂຫຍດ ເປັນເບື້ອງຕົ້ນແຫ່ງການປະພຶດພົມມະຈັນ"

ເມື່ອແລ້ວ ເທບພະບຸດນັ້ນກ່າວດັ່ງນີ້ແລ້ວ ກໍຫາຍໂຕໄປໃນບ່ອນນັ້ນເອງ

ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງອຸດເທດ ແລະ ວິພັງຂອງບຸກຄົນຜູ້ມີຣາຕີດຽວຈະເລີນແກ່ຂ້າພຣະອົງເທີ້ນ"

[໔໗໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸ ກໍທ່ານຮູ້ຈັກເທບພະບຸດນັ້ນບໍ?"

ທ່ານພຣະໂລມະສະກັງຄິຍະຂາບທູນວ່າ "ບໍ່ຮູ້ຈັກ ຂ້ານ້ອຍ"

"ພິກຂຸ ເທບພະບຸດນັ້ນ ຊື່ຈັນທະນະ ຈັນທະນະເທບພະບຸດນັ້ນເປັນຜູ້ ສົນໃຈ ໃສ່ໃຈກໍານົດດ້ວຍຈິດທັງປວງແລ້ວ ງ່ຽງໂສດສະດັບທໍານັ້ນ ຖ້າເຊັ່ນນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ

ເຮົາຈັກກ່າວ” ພິກຂຸນັ້ນ ຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດຄາຖາ ປະພັນນີ້ວ່າ

ບຸກຄົນບໍ່ຄວນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ
ບໍ່ຄວນຫວັງສິ່ງທີ່ຍັງບໍ່ມາເຖິງ
ສິ່ງໃດລ່ວງໄປແລ້ວ ສິ່ງນັ້ນກໍເປັນອັນລະໄປແລ້ວ
ແລະສິ່ງໃດທີ່ຍັງບໍ່ມາເຖິງ ສິ່ງນັ້ນກໍເປັນອັນຍັງບໍ່ມາເຖິງ
ສ່ວນບຸກຄົນໃດເຫັນແຈ້ງທຳທີ່ເປັນປັດຈຸບັນ
ບໍ່ງ່ອນແງ່ນ ບໍ່ຄອນແຄນໃນທຳນັ້ນ ໆ
ບຸກຄົນນັ້ນຄວນຈະເລີນທຳນັ້ນໃຫ້ແຈ້ງຊັດ
ບຸກຄົນຄວນທຳຄວາມພຽນຕັ້ງແຕ່ມື້ນີ້ທັນທີ
ໃຜນໍຈະຮູ້ວ່າ ຄວາມຕາຍຈັກມີໃນມື້ອື່ນນີ້
ຍ້ອນວ່າຄວາມຜ່ອນຜັນກັບມັດຈຸຣາດຜູ້ມີເສນາຫຼາຍນັ້ນ
ຍ່ອມບໍ່ມີແກ່ເຮົາທັງຫຼາຍ
ພຣະມຸນີຜູ້ສະງົບຮຽກບຸກຄົນຜູ້ມີຄວາມພຽນ
ບໍ່ຂີ້ຄ້ານທັງກາງເວັນແລະກາງຄືນ
ເຊິ່ງມີປົກກະຕິຢູ່ແນວນີ້ນັ້ນແລວ່າ “ຜູ້ມີຣາຕີດຽວຈະເລີນ”

ບຸກຄົນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ ເປັນແນວໃດ?

ຄື ບຸກຄົນບໍ່ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ “ໃນອະດີດ ເຮົາໄດ້ມີຮູບແນວນີ້”

ໃນອະດີດ ເຮົາໄດ້ມີເວທະນາແນວນີ້ ຯລຯ
ໃນອະດີດ ເຮົາໄດ້ມີສັນຍາແນວນີ້ ຯລຯ
ໃນອະດີດ ເຮົາໄດ້ມີສັງຂານແນວນີ້ ຯລຯ
ບໍ່ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ “ໃນອະດີດ ເຮົາໄດ້ມີວິນຍານແນວນີ້”

ພິກຂຸ ບຸກຄົນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ ເປັນແນວນີ້ແລ

ບຸກຄົນບໍ່ຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ ເປັນແນວໃດ?

ຄື ບຸກຄົນບໍ່ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ “ໃນອະດີດ ເຮົາໄດ້ມີຮູບແນວນີ້”

ໃນອະດີດ ເຮົາໄດ້ມີເວທະນາແນວນີ້ ຯລຯ

ໃນອະດີດ ເຮົາໄດ້ມີສັນຍາແນວນີ້ ຯລຯ
ໃນອະດີດ ເຮົາໄດ້ມີສັງຂານແນວນີ້ ຯລຯ
ບໍ່ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະດີດ ເຮົາໄດ້ມີວິນຍານແນວນີ້"

ພິກຂຸ ບຸກຄົນບໍ່ຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ ເປັນແນວນີ້ແລ

ບຸກຄົນຫວັງສິ່ງທີ່ຍັງບໍ່ມາເຖິງ ເປັນແນວໃດ?

ຄື ບຸກຄົນບໍ່ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະນາຄົດ ເຮົາເພິ່ງມີຮູບແນວນີ້"

ໃນອະນາຄົດ ເຮົາເພິ່ງມີເວທະນາແນວນີ້ ຯລຯ
ໃນອະນາຄົດ ເຮົາເພິ່ງມີສັນຍາແນວນີ້ ຯລຯ
ໃນອະນາຄົດ ເຮົາເພິ່ງມີສັງຂານແນວນີ້ ຯລຯ
ບໍ່ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະນາຄົດ ເຮົາເພິ່ງມີວິນຍານແນວນີ້"

ພິກຂຸ ບຸກຄົນຫວັງສິ່ງທີ່ຍັງບໍ່ມາເຖິງ ເປັນແນວນີ້ແລ

ບຸກຄົນບໍ່ຫວັງສິ່ງທີ່ຍັງບໍ່ມາເຖິງ ເປັນແນວໃດ?

ຄື ບຸກຄົນບໍ່ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະນາຄົດ ເຮົາເພິ່ງມີຮູບແນວນີ້"

ໃນອະນາຄົດ ເຮົາເພິ່ງມີເວທະນາແນວນີ້ ຯລຯ
ໃນອະນາຄົດ ເຮົາເພິ່ງມີສັນຍາແນວນີ້ ຯລຯ
ໃນອະນາຄົດ ເຮົາເພິ່ງມີສັງຂານແນວນີ້ ຯລຯ
ບໍ່ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ "ໃນອະນາຄົດ ເຮົາເພິ່ງມີວິນຍານແນວນີ້"

ພິກຂຸ ບຸກຄົນບໍ່ຫວັງສິ່ງທີ່ຍັງບໍ່ມາເຖິງ ເປັນແນວນີ້ແລ

ບຸກຄົນງ່ອນແງ່ນໃນທຳທີ່ເປັນປັດຈຸບັນ ເປັນແນວໃດ?

ຄື ປຸຖຸຊົນໃນໂລກນີ້ ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະ

ອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາແດ່ ພິຈາລະນາເຫັນອັດຕາມີຮູບແດ່ ພິຈາລະນາເຫັນຮູບໃນອັດຕາແດ່ ພິຈາລະນາເຫັນອັດຕາໃນຮູບແດ່

ພິຈາລະນາເຫັນເວທະນາ ฯລฯ
ພິຈາລະນາເຫັນສັນຍາ ฯລฯ
ພິຈາລະນາເຫັນສັງຂານ ฯລฯ

ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາແດ່ ພິຈາລະນາເຫັນອັດຕາມີວິນຍານແດ່ ພິຈາລະນາເຫັນວິນຍານໃນອັດຕາແດ່ ພິຈາລະນາເຫັນອັດຕາໃນວິນຍານແດ່

ພິກຂຸ ບຸກຄົນງ່ອນແງ່ນໃນທຳທີ່ເປັນປັດຈຸບັນ ເປັນແນວນີ້ແລ

ບຸກຄົນບໍ່ງ່ອນແງ່ນໃນທຳທີ່ເປັນປັດຈຸບັນ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ ຜູ້ໄດ້ສະດັບ ໄດ້ເຫັນພຣະອະຣິຍະ ສະຫຼາດໃນທຳຂອງພຣະອະຣິຍະ ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ໄດ້ເຫັນສັດຕະບຸຣຸດ ສະຫຼາດໃນທຳຂອງສັດຕະບຸຣຸດ ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ບໍ່ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາແດ່ ບໍ່ພິຈາລະນາເຫັນອັດຕາມີຮູບແດ່ ບໍ່ພິຈາລະນາເຫັນຮູບໃນອັດຕາແດ່ ບໍ່ພິຈາລະນາເຫັນອັດຕາໃນຮູບແດ່

ບໍ່ພິຈາລະນາເຫັນເວທະນາ ฯລฯ
ບໍ່ພິຈາລະນາເຫັນສັນຍາ ฯລฯ
ບໍ່ພິຈາລະນາເຫັນສັງຂານ ฯລฯ

ບໍ່ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາແດ່ ບໍ່ພິຈາລະນາເຫັນອັດຕາມີວິນຍານແດ່ ບໍ່ພິຈາລະນາເຫັນວິນຍານໃນອັດຕາແດ່ ບໍ່ພິຈາລະນາເຫັນອັດຕາໃນວິນຍານແດ່

ພິກຂຸ ບຸກຄົນບໍ່ງ່ອນແງ່ນໃນທຳທີ່ເປັນປັດຈຸບັນ ເປັນແນວນີ້ແລ

"ບຸກຄົນບໍ່ຄວນຄຳນຶງເຖິງສິ່ງທີ່ລ່ວງໄປແລ້ວ
ฯລฯ
ພຣະມຸນີຜູ້ສະງົບຮຽກບຸກຄົນ
ฯລฯ
ນັ້ນແລວ່າ "ຜູ້ມີຣາຕີດຽວຈະເລີນ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະໂລມະສະກັງຄິຍະມີໃຈຍິນດີ ຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ໂລມະສະກັງຄິຍະພັດເທກະຣັດຕະສູດທີ ໔ ຈົບ**

# ໕. ຈູລະກຳມະວິພັງຄະສູດ

## ວ່າດ້ວຍການຈຳແນກກຳ ສູດນ້ອຍ

[໔໗໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນແລ ສຸພະມານົບໂຕໄທຍະບຸດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ແລ້ວໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນ ແລ້ວນັ່ງຢູ່ບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

"ທ່ານພຣະໂຄດົມ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ສັດທີ່ເກີດເປັນມະນຸດຜາກົດເປັນຄົນຊົ່ວແລະຄົນດີ ຄື ມະນຸດທັງຫຼາຍ ຍ່ອມປາກົດວ່າມີອາຍຸສັ້ນ ມີອາຍຸຍືນ ມີພະຍາດຫຼາຍ ມີພະຍາດນ້ອຍ ມີຜິວພັນຊາມ ມີຜິວພັນດີ ມີອຳນາດນ້ອຍ ມີອຳນາດຫຼາຍ ມີໂພຄະນ້ອຍ ມີໂພຄະຫຼາຍ ເກີດໃນຕະກູນຕ່ຳ ເກີດໃນຕະກູນສູງ ມີປັນຍາໜ້ອຍ ມີປັນຍາຫຼາຍ

ທ່ານພຣະໂຄດົມ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ມະນຸດທັງຫຼາຍທີ່ເກີດເປັນມະນຸດຜາກົດເປັນຄົນຊົ່ວແລະຄົນດີ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມານົບ ສັດທັງຫຼາຍມີກຳເປັນຂອງຕົນ ມີກຳເປັນທາຍາດ ມີກຳເປັນກຳເນີດ ມີກຳເປັນເຜົ່າພັນ ມີກຳເປັນທີ່ເພິ່ງອາໄສ ກຳຍ່ອມຈຳແນກສັດທັງຫຼາຍໃຫ້ຊົ່ວແລະດີຕ່າງກັນ"

"ຂ້າພຣະອົງ ບໍ່ຮູ້ທົ່ວເຖິງເນື້ອຄວາມແຫ່ງພຣະພາສິດນີ້ທີ່ທ່ານພຣະໂຄດົມຕັດໄວ້ໂດຍຫຍໍ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານໃຫ້ພິດສະດານໄດ້ ຂໍປະທານວະໂຣກາດ ຂໍທ່ານພຣະໂຄດົມໂຜດສະແດງທຳແກ່ຂ້າພຣະອົງ ໂດຍວິທີທີ່ຂ້າພຣະອົງຈະເພິ່ງຮູ້ທົ່ວເຖິງເນື້ອຄວາມແຫ່ງພຣະພາສິດນີ້ທີ່ທ່ານພຣະໂຄດົມຕັດໄວ້ໂດຍຫຍໍ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານໃຫ້ພິດສະດານເທີ້ນ"

[໔໗໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມານົບ ຖ້າເຊັ່ນນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈະກ່າວ" ສຸພະມານົບໂຕເທີຍຍະບຸດທູນຮັບສະໜອງພຣະດຳຣັດແລ້ວ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ "ມານົບ ບຸກຄົນລາງຄົນໃນໂລກນີ້ ເປັນສະຕີກໍຕາມ ເປັນບຸຣຸດກໍຕາມ ເປັນຜູ້ຂ້າສັດ ເປັນຄົນຫຍາບຊ້າ ມີມືເປື້ອນເລືອດ ຝັກໃຝ່ໃນການປະຫັດປະຫານ ບໍ່ມີຄວາມກະລຸນາໃນສັດທັງຫຼາຍ ຍ້ອນກຳນັ້ນທີ່ເຂົາເຮັດໃຫ້ບໍລິບູນຍຶດໝັ້ນໄວ້ແນວນັ້ນ ຫຼັງຈາກຕາຍແລ້ວ ເຂົາຈຶ່ງໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ[໑] ຫຼັງຈາກຕາຍແລ້ວ ຖ້າບໍ່ໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ກັບມາເກີດເປັນມະນຸດໃນບ່ອນໃດ ໆ ເຂົາກໍຈະເປັນຄົນມີອາຍຸສັ້ນ

ມານົບ ການທີ່ບຸກຄົນເປັນຜູ້ຂ້າສັດ ເປັນຄົນຫຍາບຊ້າ ມີມືເປື້ອນເລືອດ ຝັກໃຝ່ໃນການປະຫັດປະຫານ ບໍ່ມີຄວາມກະລຸນາໃນສັດທັງຫຼາຍ ນີ້ເປັນປະຕິປະທາ (ຂໍ້ປະຕິບັດ) ທີ່ເປັນໄປເພື່ອຄວາມມີອາຍຸສັ້ນ (໑)

ມານົບ ສ່ວນບຸກຄົນລາງຄົນໃນໂລກນີ້ ເປັນສະຕີກໍຕາມ ເປັນບຸຣຸດກໍຕາມ ເປັນຜູ້ລະເວັ້ນຂາດຈາກການຂ້າສັດ ວາງທັນດາວຸດ ແລະສັດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງຫວັງປະໂຫຍດເກື້ອກູນໃນສັບພະສັດ ຍ້ອນກຳນັ້ນທີ່ເຂົາໃຫ້ບໍລິບູນຍຶດໝັ້ນໄວ້ແນວນັ້ນ ຫຼັງຈາກຕາຍແລ້ວ ເຂົາຈຶ່ງໄປເກີດໃນສຸຄະຕິໂລກສະຫວັນ ຫຼັງຈາກຕາຍແລ້ວ ຖ້າບໍ່ໄປເກີດໃນສຸຄະຕິໂລກສະຫວັນ ກັບມາເກີດເປັນມະນຸດໃນບ່ອນໃດ ໆ ເຂົາກໍຈະເປັນຄົນມີອາຍຸຍືນ

ມານົບ ການທີ່ບຸກຄົນເປັນຜູ້ລະເວັ້ນຂາດຈາກການຂ້າສັດ ວາງທັນດາວຸດ ແລະສັດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງຫວັງປະໂຫຍດເກື້ອກູນໃນສັບພະສັດ ນີ້ເປັນປະຕິປະທາທີ່ເປັນໄປເພື່ອຄວາມມີອາຍຸຍືນ (໑)

[໔໗໑] ມານົບ ບຸກຄົນລາງຄົນໃນໂລກນີ້ ເປັນສະຕີກໍຕາມ ເປັນບຸຣຸດກໍຕາມ ເປັນຜູ້ບຽດບຽນສັດທັງຫຼາຍດ້ວຍຝາມືແດ່ ດ້ວຍກ້ອນດິນແດ່ ດ້ວຍໄມ້ຄ້ອນແດ່ ດ້ວຍອາວຸດແດ່ ຍ້ອນກຳນັ້ນທີ່ເຂົາໃຫ້ບໍລິບູນ ຍຶດໝັ້ນໄວ້ແນວນັ້ນ ຫຼັງຈາກຕາຍແລ້ວ ເຂົາຈຶ່ງໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ຫຼັງຈາກຕາຍແລ້ວ ຖ້າບໍ່ໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ກັບມາເກີດເປັນມະນຸດໃນບ່ອນໃດ ໆ ເຂົາກໍຈະເປັນຜູ້ມີພະຍາດຫຼາຍ

ມານົບ ການທີ່ບຸກຄົນເປັນຜູ້ບຽດບຽນສັດທັງຫຼາຍດ້ວຍຝາມືແດ່ ດ້ວຍກ້ອນດິນແດ່ ດ້ວຍໄມ້ຄ້ອນແດ່ ດ້ວຍອາວຸດແດ່ ນີ້ເປັນປະຕິປະທາທີ່ເປັນໄປເພື່ອຄວາມມີພະຍາດຫຼາຍ (໔)

ມານົບ ສ່ວນບຸກຄົນລາງຄົນໃນໂລກນີ້ ເປັນສະຕີກໍຕາມ ເປັນບຸຣຸດກໍຕາມ ເປັນຜູ້ບໍ່

ບຽດບຽນສັດທັງຫຼາຍດ້ວຍຝາມືແດ່ ດ້ວຍກ້ອນດິນແດ່ ດ້ວຍໄມ້ຄ້ອນແດ່ ດ້ວຍອາວຸດແດ່ ຍ້ອນກຳນັ້ນທີ່ເຂົາໃຫ້ບໍລິບູນຍຶດໝັ້ນໄວ້ແນວນັ້ນ ຫຼັງຈາກຕາຍແລ້ວ ເຂົາຈຶ່ງໄປເກີດໃນສຸຄະຕິໂລກສະຫວັນ ຫຼັງຈາກຕາຍແລ້ວ ຖ້າບໍ່ໄປເກີດໃນສຸຄະຕິໂລກສະຫວັນ ກັບມາເກີດເປັນມະນຸດໃນບ່ອນໃດ ໆ ເຂົາກໍຈະເປັນຜູ້ມີພະຍາດນ້ອຍ

ມານົບ ການທີ່ບຸກຄົນເປັນຜູ້ບໍ່ບຽດບຽນສັດທັງຫຼາຍດ້ວຍຝາມືແດ່ ດ້ວຍກ້ອນດິນແດ່ ດ້ວຍໄມ້ຄ້ອນແດ່ ດ້ວຍອາວຸດແດ່ ນີ້ເປັນປະຕິປະທາທີ່ເປັນໄປເພື່ອຄວາມມີພະຍາດໜ້ອຍ (໔)

[໔໗໔] ມານົບ ບຸກຄົນລາງຄົນໃນໂລກນີ້ ເປັນສະຕີກໍຕາມ ເປັນບຸຣຸດກໍຕາມ ເປັນຜູ້ມັກໂກດ ຫຼາຍດ້ວຍຄວາມຄັບແຄ້ນ ຖືກຜູ້ອື່ນວ່າກ່າວແມ່ນເລັກໜ້ອຍກໍຂັດໃຈ ໂກດ ພະຍາບາດປອງຮ້າຍ ສະແດງຄວາມຄຽດ ຄວາມປອງຮ້າຍ ແລະ ໂທດເລັກໜ້ອຍໃຫ້ຜາກົດ ຍ້ອນກຳນັ້ນທີ່ເຂົາໃຫ້ບໍລິບູນຍຶດໝັ້ນໄວ້ແນວນັ້ນ ຫຼັງຈາກຕາຍແລ້ວ ເຂົາຈຶ່ງໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ຫຼັງຈາກຕາຍແລ້ວ ຖ້າບໍ່ໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ກັບມາເກີດເປັນມະນຸດໃນບ່ອນໃດ ໆ ເຂົາກໍຈະເປັນຜູ້ມີຜິວພັນຊາມ

ມານົບ ການທີ່ບຸກຄົນເປັນຜູ້ມັກໂກດ ຫຼາຍດ້ວຍຄວາມຄັບແຄ້ນ ຖືກຜູ້ອື່ນວ່າກ່າວແມ່ນເລັກໜ້ອຍກໍຂັດໃຈ ໂກດ ພະຍາບາດ ປອງຮ້າຍ ສະແດງຄວາມຄຽດຄວາມ ປອງຮ້າຍແລະໂທດເລັກໜ້ອຍໃຫ້ຜາກົດ ນີ້ເປັນປະຕິປະທາທີ່ເປັນໄປເພື່ອຄວາມມີຜິວພັນຊາມ (໕)

ມານົບ ສ່ວນບຸກຄົນລາງຄົນໃນໂລກນີ້ ເປັນສະຕີກໍຕາມ ເປັນບຸຣຸດກໍຕາມ ເປັນຜູ້ບໍ່ໂກດ ບໍ່ຫຼາຍດ້ວຍຄວາມຄັບແຄ້ນ ຖືກຜູ້ອື່ນວ່າກ່າວແມ່ນຫຼາຍກໍບໍ່ຂັດໃຈ ບໍ່ໂກດ ບໍ່ພະຍາບາດ ບໍ່ປອງຮ້າຍ ບໍ່ສະແດງຄວາມຄຽດ ຄວາມປອງຮ້າຍແລະໂທດເລັກໜ້ອຍໃຫ້ຜາກົດ ຍ້ອນກຳນັ້ນທີ່ເຂົາໃຫ້ບໍລິບູນຍຶດໝັ້ນໄວ້ແນວນັ້ນ ຫຼັງຈາກຕາຍແລ້ວ ເຂົາຈຶ່ງໄປເກີດໃນສຸຄະຕິໂລກສະຫວັນ ຫຼັງຈາກຕາຍແລ້ວ ຖ້າບໍ່ໄປເກີດໃນສຸຄະຕິໂລກສະຫວັນ ກັບມາເກີດເປັນມະນຸດໃນບ່ອນໃດ ໆ ເຂົາກໍຈະເປັນຜູ້ມີຜິວພັນຜ່ອງໃສ

ມານົບ ການທີ່ບຸກຄົນເປັນຜູ້ບໍ່ໂກດ ບໍ່ຫຼາຍດ້ວຍຄວາມຄັບແຄ້ນ ຖືກຜູ້ອື່ນວ່າກ່າວແມ່ນຫຼາຍກໍບໍ່ຂັດໃຈ ບໍ່ໂກດ ບໍ່ພະຍາບາດ ບໍ່ປອງຮ້າຍ ບໍ່ສະແດງຄວາມຄຽດຄວາມປອງຮ້າຍແລະໂທດເລັກໜ້ອຍໃຫ້ຜາກົດ ນີ້ເປັນປະຕິປະທາທີ່ເປັນໄປເພື່ອຄວາມເປັນຜູ້ມີຜິວພັນຜ່ອງໃສ (໖)

[໔໗໕] ມານົບ ບຸກຄົນລາງຄົນໃນໂລກນີ້ ເປັນສະຕີກໍຕາມ ເປັນບຸຣຸດກໍຕາມ ເປັນຜູ້ມີໃຈຣິດສະຫຍາ ຍ່ອມຣິດສະຫຍາ ປະທຸດສະຮ້າຍ ມັດຄວາມຣິດສະຫຍາໃນລາບສັກກາຣະ ຄວາມເຄົາລົບ ຄວາມນັບຖື ການຂາບໄຫວ້ ແລະການບູຊາຂອງບຸກຄົນອື່ນ ຍ້ອນກຳນັ້ນທີ່ເຂົາໃຫ້ບໍລິບູນຍຶດໝັ້ນໄວ້ແນວນັ້ນ ຫຼັງຈາກຕາຍແລ້ວ ເຂົາຈຶ່ງໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະ

ຮົກ ຫຼັງຈາກຕາຍແລ້ວ ຖ້າບໍ່ໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ກັບມາເກີດເປັນມະນຸດໃນບ່ອນໃດ ໆ ເຂົາກໍຈະເປັນຜູ້ມີອຳນາດໜ້ອຍ

ມານົບ ການທີ່ບຸກຄົນເປັນຜູ້ມີໃຈຣິດສະຫຍາ ຍ່ອມຣິດສະຫຍາ ປະທຸດສະຮ້າຍ ມັດຄວາມຣິດສະຫຍາໃນລາບສັກກາຣະ ຄວາມເຄົາລົບ ຄວາມນັບຖື ການຂາບໄຫວ້ ແລະການບູຊາຂອງບຸກຄົນອື່ນ ນີ້ເປັນປະຕິປະທາທີ່ເປັນໄປເພື່ອຄວາມເປັນຜູ້ມີອຳນາດໜ້ອຍ (๔)

ມານົບ ສ່ວນບຸກຄົນລາງຄົນໃນໂລກນີ້ ເປັນສະຕີກໍຕາມ ເປັນບຸຣຸດກໍຕາມ ເປັນຜູ້ມີໃຈບໍ່ຣິດສະຫຍາ ຍ່ອມບໍ່ຣິດສະຫຍາ ບໍ່ປະທຸດສະຮ້າຍ ບໍ່ມັດຄວາມຣິດສະຫຍາໃນລາບສັກກາຣະ ຄວາມເຄົາລົບ ຄວາມນັບຖື ການຂາບໄຫວ້ ແລະການບູຊາຂອງບຸກຄົນອື່ນ ຍ້ອນກຳນັ້ນທີ່ເຂົາໃຫ້ບໍລິບູນຍຶດໝັ້ນໄວ້ແນວນັ້ນ ຫຼັງຈາກຕາຍແລ້ວ ເຂົາຈຶ່ງໄປເກີດໃນສຸຄະຕິໂລກສະຫວັນ ຫຼັງຈາກຕາຍແລ້ວ ຖ້າບໍ່ໄປເກີດໃນສຸຄະຕິໂລກສະຫວັນ ກັບມາເກີດເປັນມະນຸດໃນບ່ອນໃດ ໆ ເຂົາກໍຈະເປັນຜູ້ມີອຳນາດຫຼາຍ

ມານົບ ການທີ່ບຸກຄົນເປັນຜູ້ມີໃຈບໍ່ຣິດສະຫຍາ ຍ່ອມບໍ່ຣິດສະຫຍາ ບໍ່ປະທຸດສະຮ້າຍ ບໍ່ມັດຄວາມຣິດສະຫຍາໃນລາບສັກກາຣະ ຄວາມເຄົາລົບ ຄວາມນັບຖື ການຂາບໄຫວ້ ແລະການບູຊາຂອງບຸກຄົນອື່ນ ນີ້ເປັນປະຕິປະທາທີ່ເປັນໄປເພື່ອຄວາມເປັນຜູ້ມີອຳນາດຫຼາຍ (๔)

[๘໗๘] ມານົບ ບຸກຄົນລາງຄົນໃນໂລກນີ້ ເປັນສະຕີກໍຕາມ ເປັນບຸຣຸດກໍຕາມ ເປັນຜູ້ບໍ່ໃຫ້ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບໄລ້ ທີ່ນອນ ທີ່ພັກ ເຄື່ອງປະທີບແກ່ສະມະນະຫຼືພາມ ຍ້ອນກຳນັ້ນທີ່ເຂົາໃຫ້ບໍລິບູນຍຶດໝັ້ນໄວ້ແນວນັ້ນ ຫຼັງຈາກຕາຍແລ້ວ ເຂົາຈຶ່ງໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ຫຼັງຈາກຕາຍແລ້ວ ຖ້າບໍ່ໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ກັບມາເກີດເປັນມະນຸດໃນບ່ອນໃດ ໆ ເຂົາກໍຈະເປັນຜູ້ມີໂພຄະໜ້ອຍ

ມານົບ ການທີ່ບຸກຄົນເປັນຜູ້ບໍ່ໃຫ້ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ເຄື່ອງປະທີບແກ່ສະມະນະຫຼືພາມ ນີ້ເປັນປະຕິປະທາທີ່ເປັນໄປເພື່ອຄວາມເປັນຜູ້ມີໂພຄະໜ້ອຍ (໕)

ມານົບ ສ່ວນບຸກຄົນລາງຄົນໃນໂລກນີ້ ເປັນສະຕີກໍຕາມ ເປັນບຸຣຸດກໍຕາມ ເປັນຜູ້ໃຫ້ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ເຄື່ອງປະທີບແກ່ສະມະນະຫຼືພາມ ຍ້ອນກຳນັ້ນທີ່ເຂົາໃຫ້ບໍລິບູນຍຶດໝັ້ນໄວ້ແນວນັ້ນ ຫຼັງຈາກຕາຍແລ້ວ ເຂົາຈຶ່ງໄປເກີດໃນສຸຄະຕິໂລກສະຫວັນ ຫຼັງຈາກຕາຍແລ້ວ ຖ້າບໍ່ໄປເກີດໃນສຸຄະຕິໂລກສະຫວັນ ກັບມາເກີດເປັນມະນຸດໃນບ່ອນໃດ ໆ ເຂົາກໍຈະເປັນຜູ້ມີໂພຄະຫຼາຍ

ມານົບ ການທີ່ບຸກຄົນເປັນຜູ້ໃຫ້ເຂົ້າ ນໍ້າ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ເຄື່ອງປະທີບແກ່ສະມະນະຫຼືພາມ ນີ້ເປັນປະຕິປະທາທີ່ເປັນໄປເພື່ອຄວາມເປັນຜູ້ມີໂພຄະຫຼາຍ (໕)

[໔໑໕] ມານົບ ບຸກຄົນລາງຄົນໃນໂລກນີ້ ເປັນສະຕີກໍຕາມ ເປັນບຸຣຸດກໍຕາມ ເປັນຜູ້ກະດ້າງ ຈອງຫອງ ຍ່ອມບໍ່ຂາບໄຫວ້ຜູ້ທີ່ຄວນຂາບໄຫວ້໑ ບໍ່ລຸກຮັບຜູ້ທີ່ຄວນລຸກຮັບ ບໍ່ໃຫ້ອາສະນະແກ່ຜູ້ທີ່ຄວນໃຫ້ອາສະນະ ບໍ່ໃຫ້ທາງແກ່ຜູ້ທີ່ຄວນໃຫ້ທາງ ບໍ່ສັກກາຣະຜູ້ທີ່ຄວນສັກກາຣະ ບໍ່ເຄົາລົບຜູ້ທີ່ຄວນເຄົາລົບ ບໍ່ນັບຖືຜູ້ທີ່ຄວນນັບຖື ບໍ່ບູຊາຜູ້ທີ່ຄວນບູຊາ ຍ້ອນກໍານັ້ນທີ່ເຂົາໃຫ້ບໍລິບູນຍຶດໝັ້ນໄວ້ແນວນັ້ນ ຫຼັງຈາກຕາຍແລ້ວ ເຂົາຈຶ່ງໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ຫຼັງຈາກຕາຍແລ້ວ ຖ້າບໍ່ໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ກັບມາເກີດເປັນມະນຸດໃນບ່ອນໃດ ໆ ເຂົາຈະເປັນຜູ້ເກີດໃນຕະກູນຕໍ່າ

ມານົບ ການທີ່ບຸກຄົນເປັນຜູ້ກະດ້າງ ຈອງຫອງ ຍ່ອມບໍ່ຂາບໄຫວ້ຜູ້ທີ່ຄວນຂາບໄຫວ້ ບໍ່ລຸກຮັບຜູ້ທີ່ຄວນລຸກຮັບ ບໍ່ໃຫ້ອາສະນະແກ່ຜູ້ທີ່ຄວນໃຫ້ອາສະນະ ບໍ່ໃຫ້ທາງແກ່ຜູ້ທີ່ຄວນໃຫ້ທາງ ບໍ່ສັກກາຣະຜູ້ທີ່ຄວນສັກກາຣະ ບໍ່ເຄົາລົບຜູ້ທີ່ຄວນເຄົາລົບ ບໍ່ນັບຖືຜູ້ທີ່ຄວນນັບຖື ບໍ່ບູຊາຜູ້ທີ່ຄວນບູຊາ ນີ້ເປັນປະຕິປະທາທີ່ເປັນໄປເພື່ອຄວາມເປັນຜູ້ເກີດໃນຕະກູນຕໍ່າ (໖)

ມານົບ ສ່ວນບຸກຄົນລາງຄົນໃນໂລກນີ້ ເປັນສະຕີກໍຕາມ ເປັນບຸຣຸດກໍຕາມ ເປັນຜູ້ບໍ່ກະດ້າງ ບໍ່ຈອງຫອງ ຍ່ອມຂາບໄຫວ້ຜູ້ທີ່ຄວນຂາບໄຫວ້ ລຸກຮັບຜູ້ທີ່ຄວນລຸກຮັບ ໃຫ້ອາສະນະແກ່ຜູ້ທີ່ຄວນໃຫ້ອາສະນະ ໃຫ້ທາງແກ່ຜູ້ທີ່ຄວນໃຫ້ທາງ ສັກກາຣະຜູ້ທີ່ຄວນສັກກາຣະ ເຄົາລົບຜູ້ທີ່ຄວນເຄົາລົບ ນັບຖືຜູ້ທີ່ຄວນນັບຖື ບູຊາຜູ້ທີ່ຄວນບູຊາ ຍ້ອນກໍານັ້ນທີ່ເຂົາໃຫ້ບໍລິບູນຍຶດໝັ້ນໄວ້ແນວນັ້ນ ຫຼັງຈາກຕາຍແລ້ວ ເຂົາຈຶ່ງໄປເກີດໃນສຸຄະຕິໂລກສະຫວັນ ຫຼັງຈາກຕາຍແລ້ວ ຖ້າບໍ່ໄປເກີດໃນສຸຄະຕິໂລກສະຫວັນ ກັບມາເກີດເປັນມະນຸດໃນບ່ອນໃດ ໆ ເຂົາຈະເປັນຜູ້ເກີດໃນຕະກູນສູງ

ມານົບ ການທີ່ບຸກຄົນເປັນຜູ້ບໍ່ກະດ້າງ ບໍ່ຈອງຫອງ ຍ່ອມຂາບໄຫວ້ຜູ້ທີ່ຄວນຂາບໄຫວ້ ລຸກຮັບຜູ້ທີ່ຄວນລຸກຮັບ ໃຫ້ອາສະນະແກ່ຜູ້ທີ່ຄວນໃຫ້ອາສະນະ ໃຫ້ທາງແກ່ຜູ້ທີ່ຄວນໃຫ້ທາງ ສັກກາຣະຜູ້ທີ່ຄວນສັກກາຣະ ເຄົາລົບຜູ້ທີ່ຄວນເຄົາລົບ ນັບຖືຜູ້ທີ່ຄວນນັບຖື ບູຊາຜູ້ທີ່ຄວນບູຊາ ນີ້ເປັນປະຕິປະທາທີ່ເປັນໄປເພື່ອຄວາມເປັນຜູ້ເກີດໃນຕະກູນສູງ (໖)

[໔໑໖] ມານົບ ບຸກຄົນລາງຄົນໃນໂລກນີ້ ເປັນສະຕີກໍຕາມ ເປັນບຸຣຸດກໍຕາມ ບໍ່ເຂົ້າໄປຫາສະມະນະຫຼືພາມແລ້ວສອບຖາມວ່າ "ທ່ານຂ້ານ້ອຍ ອັນໃດເປັນກຸສົນ ອັນໃດເປັນອະກຸສົນ ອັນໃດມີໂທດ ອັນໃດບໍ່ມີໂທດ ອັນໃດຄວນເສບ ອັນໃດບໍ່ຄວນເສບ ກໍາອັນໃດທີ່ຂ້າພະເຈົ້າເຮັດ

ຈຶ່ງເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກຕະຫຼອດການລະນານ ຫຼື ວ່າ ກຳອັນໃດທີ່ຂ້າພະເຈົ້າເຮັດຈຶ່ງເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອສຸກຕະຫຼອດການລະນານ" ຍ້ອນກຳນັ້ນທີ່ເຂົາໃຫ້ບໍລິບູນຍຶດໝັ້ນໄວ້ແນວນັ້ນ ຫຼັງຈາກຕາຍແລ້ວ ເຂົາຈຶ່ງໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ຫຼັງຈາກຕາຍແລ້ວ ຖ້າບໍ່ໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ກັບມາເກີດເປັນມະນຸດໃນບ່ອນໃດ ໆ ເຂົາຈະເປັນຜູ້ມີປັນຍາຊາມ

ມານົບ ການທີ່ບຸກຄົນບໍ່ເຂົ້າໄປຫາສະມະນະຫຼືພາມແລ້ວສອບຖາມວ່າ "ທ່ານຂ້ານ້ອຍ ອັນໃດເປັນກຸສົນ ອັນໃດເປັນອະກຸສົນ ອັນໃດມີໂທດ ອັນໃດບໍ່ມີໂທດ ອັນໃດຄວນເສບ ອັນໃດບໍ່ຄວນເສບ ກຳອັນໃດທີ່ຂ້າພະເຈົ້າເຮັດຈຶ່ງເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກຕະຫຼອດການລະນານ ຫຼື ວ່າ ກຳອັນໃດທີ່ຂ້າພະເຈົ້າເຮັດຈຶ່ງເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອສຸກຕະຫຼອດການລະນານ" ນີ້ເປັນປະຕິປະທາທີ່ເປັນໄປເພື່ອຄວາມເປັນຜູ້ມີປັນຍາຊາມ (ກ)

ມານົບ ສ່ວນບຸກຄົນລາງຄົນໃນໂລກນີ້ ເປັນສະຕີກໍຕາມ ເປັນບຸຣຸດກໍຕາມ ເຂົ້າໄປຫາສະມະນະຫຼືພາມແລ້ວສອບຖາມວ່າ "ທ່ານຂ້ານ້ອຍ ອັນໃດເປັນກຸສົນ ອັນໃດເປັນອະກຸສົນ ອັນໃດມີໂທດ ອັນໃດບໍ່ມີໂທດ ອັນໃດຄວນເສບ ອັນໃດບໍ່ຄວນເສບ ກຳອັນໃດທີ່ຂ້າພະເຈົ້າເຮັດຈຶ່ງເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກຕະຫຼອດການລະນານ ຫຼືວ່າກຳອັນໃດທີ່ຂ້າພະເຈົ້າເຮັດຈຶ່ງເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອສຸກຕະຫຼອດການລະນານ ຍ້ອນກຳນັ້ນທີ່ເຂົາໃຫ້ບໍລິບູນຍຶດໝັ້ນໄວ້ແນວນັ້ນ ຫຼັງຈາກຕາຍແລ້ວ ເຂົາຈຶ່ງໄປເກີດໃນສຸຄະຕິໂລກສະຫວັນ ຫຼັງຈາກຕາຍແລ້ວ ຖ້າບໍ່ໄປເກີດໃນສຸຄະຕິໂລກສະຫວັນ ກັບມາເກີດເປັນມະນຸດໃນບ່ອນໃດ ໆ ເຂົາຈະເປັນຜູ້ມີປັນຍາຫຼາຍ

ມານົບ ການທີ່ບຸກຄົນເຂົ້າໄປຫາສະມະນະຫຼືພາມແລ້ວສອບຖາມວ່າ "ທ່ານຂ້ານ້ອຍ ອັນໃດເປັນກຸສົນ ອັນໃດເປັນອະກຸສົນ ອັນໃດມີໂທດ ອັນໃດບໍ່ມີໂທດ ອັນໃດຄວນເສບ ອັນໃດບໍ່ຄວນເສບ ກຳອັນໃດທີ່ຂ້າພະເຈົ້າເຮັດຈຶ່ງເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກຕະຫຼອດການລະນານ ຫຼື ວ່າ ກຳອັນໃດທີ່ຂ້າພະເຈົ້າເຮັດຈຶ່ງເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອສຸກຕະຫຼອດການລະນານ ນີ້ເປັນປະຕິປະທາທີ່ເປັນໄປເພື່ອຄວາມເປັນຜູ້ມີປັນຍາຫຼາຍ (ກ)

[໘໙໗] ມານົບ ລວມຄວາມວ່າ ປະຕິປະທາທີ່ເປັນໄປເພື່ອຄວາມມີອາຍຸສັ້ນຍ່ອມນຳເຂົ້າໄປສູ່ຄວາມມີອາຍຸສັ້ນ

ປະຕິປະທາທີ່ເປັນໄປເພື່ອຄວາມມີ ອາຍຸຍືນຍ່ອມນຳເຂົ້າໄປສູ່ຄວາມມີອາຍຸຍືນ
ປະຕິປະທາທີ່ເປັນໄປເພື່ອຄວາມມີ ພະຍາດຫຼາຍຍ່ອມນຳເຂົ້າໄປສູ່ຄວາມມີພະຍາດຫຼາຍ
ປະຕິປະທາທີ່ເປັນໄປເພື່ອຄວາມມີ ພະຍາດໜ້ອຍຍ່ອມນຳເຂົ້າໄປສູ່ຄວາມມີພະຍາດໜ້ອຍ

ປະຕິປະທາທີ່ເປັນໄປເພື່ອຄວາມມີ ຜິວພັນຊາມຍ່ອມນຳເຂົ້າໄປສູ່ຄວາມມີຜິວພັນຊາມ

ປະຕິປະທາທີ່ເປັນໄປເພື່ອຄວາມມີ ຜິວພັນຜ່ອງໃສຍ່ອມນຳເຂົ້າໄປສູ່ຄວາມມີຜິວພັນຜ່ອງໃສ

ປະຕິປະທາທີ່ເປັນໄປເພື່ອຄວາມມີອຳນາດໜ້ອຍ ຍ່ອມນຳເຂົ້າໄປສູ່ຄວາມມີອຳນາດໜ້ອຍ

ປະຕິປະທາທີ່ເປັນໄປເພື່ອຄວາມມີ ອຳນາດຫຼາຍຍ່ອມນຳເຂົ້າໄປສູ່ຄວາມມີອຳນາດຫຼາຍ

ປະຕິປະທາທີ່ເປັນໄປເພື່ອຄວາມມີ ໂພຄະໜ້ອຍ ຍ່ອມນຳເຂົ້າໄປສູ່ຄວາມມີໂພຄະໜ້ອຍ

ປະຕິປະທາທີ່ເປັນໄປເພື່ອຄວາມມີ ໂພຄະຫຼາຍຍ່ອມນຳເຂົ້າໄປສູ່ຄວາມມີໂພຄະຫຼາຍ

ປະຕິປະທາທີ່ເປັນໄປເພື່ອຄວາມ ເກີດໃນຕະກູນຕ່ຳຍ່ອມນຳເຂົ້າໄປສູ່ຄວາມເກີດໃນຕະກູນຕ່ຳ

ປະຕິປະທາທີ່ເປັນໄປເພື່ອຄວາມ ເກີດໃນຕະກູນສູງຍ່ອມນຳເຂົ້າໄປສູ່ຄວາມເກີດໃນຕະກູນສູງ

ປະຕິປະທາທີ່ເປັນໄປເພື່ອຄວາມມີ ປັນຍາຊາມຍ່ອມນຳເຂົ້າໄປສູ່ຄວາມມີປັນຍາຊາມ

ປະຕິປະທາທີ່ເປັນໄປເພື່ອຄວາມມີ ປັນຍາຫຼາຍຍ່ອມນຳເຂົ້າໄປສູ່ຄວາມມີປັນຍາຫຼາຍ

ສັດທັງຫຼາຍມີກຳເປັນຂອງຕົນ ມີກຳເປັນທາຍາດ ມີກຳເປັນກຳເນີດ ມີກຳເປັນເຜົ່າພັນ ມີກຳເປັນທີ່ເພິ່ງອາໄສ ກຳຍ່ອມຈຳແນກສັດທັງຫຼາຍໃຫ້ຊົ່ວ ແລະດີຕ່າງກັນ ດ້ວຍປະການແນວນີ້”

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ສຸພະມານົບໂຕເທີຍຍະບຸດໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

“ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ຂ້າແດ່ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ທ່ານພຣະໂຄດົມ ຊົງປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນບ່ອນມືດ ດ້ວຍຕັ້ງໃຈວ່າ “ຄົນມີຕາດີຈັກເຫັນຮູບໄດ້” ຂ້າພຣະອົງນີ້ ຂໍເຖິງທ່ານພຣະໂຄດົມ ພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມໂຜດຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ” ດັ່ງນີ້ແລ

**ຈູລະກຳມະວິພັງຄະສູດທີ ໕ ຈົບ**

# ៦. ມະຫາກຳມະວິພັງຄະສູດ

## ວ່າດ້ວຍການຈຳແນກກຳ ສູດໃຫຍ່

[໔໙໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ສະໄໝນັ້ນແລ ທ່ານພຣະສະມິທທິຢູ່ໃນຕູບປ່າ ຄັ້ງນັ້ນ ປະຣິພາຊົກຊື່ໂປຕະລິບຸດທ່ຽວຍ່າງຫຼິ້ນຢູ່ ເຂົ້າໄປຫາທ່ານພຣະສະມິດທິຮອດບ່ອນຢູ່ ແລ້ວໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນສົມຄວນ ໄດ້ກ່າວກັບທ່ານພຣະສະມິດທິວ່າ

“ທ່ານພຣະສະມິດທິ ຂ້າພະເຈົ້າໄດ້ສະດັບຮັບມາສະເພາະພຣະພັກ ພຣະສະມະນະໂຄດົມວ່າ “ກາຍຍະກຳບໍ່ຈິງ ວະຈີກຳບໍ່ຈິງ ມະໂນກຳທໍ່ນັ້ນຈິງ” ແລະວ່າ “ສະມາບັດທີ່ບຸກຄົນເຂົ້າແລ້ວບໍ່ສະເຫວີຍເວທະນາອັນໃດ ໆ ນັ້ນກໍມີຢູ່”

ທ່ານພຣະສະມິດທິກ່າວວ່າ “ທ່ານໂປຕະລິບຸດ ທ່ານຢ່າກ່າວແນວນີ້ ຢ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ຍ້ອນພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດໄວ້ແນວນີ້ວ່າ “ກາຍຍະກຳບໍ່ຈິງ ວະຈີກຳບໍ່ຈິງ ມະໂນກຳທໍ່ນັ້ນຈິງ” ແລະວ່າ “ສະມາບັດທີ່ບຸກຄົນເຂົ້າແລ້ວບໍ່ສະເຫວີຍເວທະນາອັນໃດ ໆ ນັ້ນກໍມີຢູ່”

“ທ່ານພຣະສະມິດທິ ທ່ານບວດມາດົນທໍ່ໃດແລ້ວ”

“ທ່ານຜູ້ມີອາຍຸ ອາຕະມາພາບບວດໄດ້ບໍ່ດົນ ພຽງແຕ່ ៣ ພັນສາທໍ່ນັ້ນ”

“ບັດນີ້ ໃນເມື່ອພິກຂຸໃໝ່ຍັງຄິດປົກປ້ອງພຣະສາດສະດາເຖິງພຽງນີ້ ເຮົາທັງຫຼາຍຈະເວົ້າອັນໃດກັບພິກຂຸຜູ້ເປັນພຣະເຖຣະໄດ້ນໍ? ທ່ານພຣະສະມິດທິ ບຸກຄົນເຮັດກຳທີ່ປະກອບດ້ວຍຄວາມຈົ່ງໃຈທາງກາຍ ທາງວາຈາ ແລະທາງໃຈແລ້ວ ຈະສະເຫວີຍຜົນອັນໃດ?”

“ທ່ານໂປຕະລິບຸດ ບຸກຄົນເຮັດກຳທີ່ປະກອບດ້ວຍຄວາມຈົ່ງໃຈທາງກາຍ ທາງວາຈາ ແລະທາງໃຈແລ້ວ ຈະສະເຫວີຍທຸກ”

ລຳດັບນັ້ນ ປະຣິພາຊົກຊື່ໂປຕະລິບຸດ ບໍ່ຍິນດີບໍ່ຄັດຄ້ານພາສິດຂອງທ່ານພຣະສະມິດທິ ລຸກຈາກບ່ອນນັ່ງແລ້ວຈາກໄປ

[໔໙໙] ຄັ້ງນັ້ນແລ ເມື່ອປະຣິພາຊົກຊື່ໂປຕະລິບຸດຈາກໄປບໍ່ດົນ ທ່ານພຣະສະມິດທິເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ແລ້ວໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນສົມຄວນ ເລົ່າເລື້ອງທີ່ຕົນໄດ້ສົນທະນາປາໄສກັບ ປະຣິພາຊົກຊື່ໂປຕະລິບຸດທັງໝົດແກ່ທ່ານພຣະອານົນເຖຣະ

ເມື່ອທ່ານພຣະສະມິດທິເລົ່າເລື້ອງແນວນີ້ແລ້ວ ທ່ານພຣະອານົນຈຶ່ງໄດ້ກ່າວກັບທ່ານພຣະສະມິດທິວ່າ "ທ່ານສະມິດທິ ເລື້ອງນີ້ມີມູນເຫດພໍທີ່ຈະເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າໄດ້ ມາເທີ້ນເຮົາທັງ ໒ ເພິ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຍັງທີ່ປະທັບ ເພິ່ງຂາບທູນເນື້ອຄວາມນີ້ແດ່ພຣະອົງ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍຊົງຕອບແນວໃດ ເຮົາທັງຫຼາຍຄວນຊົງຈຳເນື້ອຄວາມນັ້ນໄວ້ແນວນັ້ນ" ເມື່ອທ່ານພຣະສະມິດທິຮັບຄຳແລ້ວ

ຄັ້ງນັ້ນ ທ່ານພຣະສະມິດທິ ແລະ ທ່ານພຣະອານົນໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນສົມຄວນ ທ່ານພຣະອານົນໄດ້ຂາບທູນເລື້ອງທີ່ທ່ານພຣະສະມິດທິໄດ້ສົນທະນາປາໄສກັບປະຣິພາຊົກຊື່ ໂປຕະລິບຸດທັງໝົດແດ່ ພຣະຜູ້ມີພຣະພາກເຈົ້າ ເມື່ອພຣະອານົນຂາບທູນແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບທ່ານພຣະອານົນວ່າ

"ອານົນ ເຮົາບໍ່ຮູ້ແມ່ນຄວາມເຫັນຂອງປະຣິພາຊົກຊື່ໂປຕະລິບຸດເລີຍ ຈະຮູ້ການສົນທະນາປາໄສກັນປານນີ້ໄດ້ແນວໃດ ໂມຄະບຸຣຸດຜູ້ມີນາມວ່າ ສະມິເທີນີ້ໄດ້ຕອບບັນຫາທີ່ຄວນຈຳແນກຕອບແກ່ປະຣິພາຊົກຊື່ໂປຕະລິບຸດໂດຍແງ່ດຽວ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະອຸທາຍີໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ກໍຖ້າທ່ານພຣະສະມິດທິກ່າວໝາຍເອົາທຸກນີ້ແລ້ວ ອາລົມແນວໃດແນວໜຶ່ງທີ່ສັດສະເຫວີຍແລ້ວ ອາລົມນັ້ນຕ້ອງຈັດເຂົ້າໃນທຸກແມ່ນບໍ? ຂ້ານ້ອຍ"

[໓໐໐] ເມື່ອທ່ານພຣະອຸທາຍີຂາບທູນແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງຮັບສັ່ງຮຽກທ່ານພຣະອານົນມາດ້ວຍຕັດວ່າ "ອານົນ ທ່ານຈົ່ງເຫັນຄວາມນອກລູ່ນອກທາງຂອງອຸທາຍີຜູ້ເປັນໂມຄະບຸຣຸດນີ້ເທີ້ນ ເຮົາໄດ້ຮູ້ບັດນີ້ເອງ ໂມຄະບຸຣຸດອຸທາຍີນີ້ເມື່ອຈະເວົ້າກໍເວົ້າອອກມາທັນທີໂດຍບໍ່ແຍບຄາຍ ເບື້ອງຕົ້ນຢ່າງແນ່ນອນປະຣິພາຊົກຊື່ ໂປຕະລິບຸດຖາມເຖິງເວທະນາ ໓

ຖ້າໂມຄະບຸຣຸດສະມິທທິຜູ້ຖືກຖາມແນວນີ້ຈະເພິ່ງຕອບແນວນີ້ວ່າ "ທ່ານໂປຕະລິບຸດ ບຸກຄົນເຮັດກຳທີ່ປະກອບດ້ວຍຄວາມຈົ່ງໃຈທາງກາຍ ທາງວາຈາ ແລະ ທາງໃຈອັນໃຫ້ຜົນເປັນສຸກຍ່ອມສະເຫວີຍສຸກ ບຸກຄົນເຮັດກຳທີ່ປະກອບດ້ວຍຄວາມຈົ່ງໃຈທາງກາຍ ທາງວາຈາ ແລະທາງໃຈອັນໃຫ້ຜົນເປັນທຸກ ຍ່ອມສະເຫວີຍທຸກ ບຸກຄົນເຮັດກຳທີ່ປະກອບດ້ວຍຄວາມຈົງໃຈທາງກາຍ

ທາງວາຈາ ແລະ ທາງໃຈອັນໃຫ້ຜົນເປັນອະທຸກຂະມະສຸຂະ ຍ່ອມສະເຫວີຍຜົນເປັນອະທຸກຂະມະສຸຂະ

ອານົນ ໂມຄະບຸຣຸດສະມິດທິເມື່ອຕອບແນວນີ້ ຊື່ວ່າ ຕອບໂດຍຖືກຕ້ອງແກ່ປະຣິພາຊົກຊື່ໂປຕະລິບຸດ ແຕ່ວ່າ ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ເປັນຄົນໂງ່ ບໍ່ສະຫຼາດ ຈະເຂົ້າໃຈມະຫາກຳມະວິພັງຂອງຕະຖາຄົດໄດ້ແນວໃດນໍ? ຖ້າຕະຖາຄົດຈຳແນກມະຫາກຳມະວິພັງຢູ່ ທ່ານທັງຫຼາຍຄວນຟັງ"

ທ່ານພຣະອານົນຂາບທູນວ່າ "ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ບັດນີ້ເປັນການສົມຄວນ ຂ້າແດ່ພຣະສຸຄົດ ບັດນີ້ເປັນການສົມຄວນ ທີ່ພຣະຜູ້ມີພຣະພາກເຈົ້າຈະຊົງຈຳແນກມະຫາກຳມະວິພັງ ພິກຂຸທັງຫຼາຍໄດ້ສະດັບຈາກພຣະຜູ້ມີພຣະພາກເຈົ້າແລ້ວຈັກຊົງຈຳໄວ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖ້າເຊັ່ນນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ເມື່ອທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດເລື້ອງນີ້ວ່າ

"ອານົນ ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ມັກຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເປັນຜູ້ເພ່ງເລັງຍາກໄດ້ສິ່ງຂອງຂອງເຂົາ ເປັນຜູ້ມີຈິດພະຍາບາດ ເປັນມິດສາທິດຖິໃນໂລກນີ້ ຫຼັງຈາກຕາຍແລ້ວເຂົາຈຶ່ງໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ

໒. ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ມັກຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເປັນຜູ້ເພ່ງເລັງຍາກໄດ້ສິ່ງຂອງຂອງເຂົາ ເປັນຜູ້ມີຈິດພະຍາບາດ ເປັນມິດສາທິດຖິ ໃນໂລກນີ້ ຫຼັງຈາກຕາຍແລ້ວເຂົາຈຶ່ງໄປເກີດໃນສຸຄະຕິໂລກສະຫວັນ

໓. ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ເປັນຜູ້ບໍ່ເພ່ງເລັງຍາກໄດ້ສິ່ງຂອງຂອງເຂົາ ເປັນຜູ້ມີຈິດບໍ່ພະຍາບາດ ເປັນສຳມາທິດຖິໃນໂລກນີ້ ຫຼັງຈາກຕາຍແລ້ວເຂົາຈຶ່ງໄປເກີດໃນສຸຄະຕິໂລກສະຫວັນ

໔. ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ເປັນຜູ້ບໍ່ເພັ່ງເລັງຢາກໄດ້ສິ່ງຂອງຂອງເຂົາ ເປັນຜູ້ມີຈິດບໍ່ພະຍາບາດ ເປັນສຳມາທິດຖິໃນໂລກນີ້ ຫຼັງຈາກຕາຍແລ້ວເຂົາຈຶ່ງໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ

[໓໐໑] ອານົນ

໑. ສະມະນະຫຼືພາມລາງຄົນໃນໂລກນີ້ ອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນຍິ່ງ ຄວາມພະຍາຍາມ ຄວາມບໍ່ຜະໝາດ ຄວາມໃສ່ໃຈໂດຍຖືກຕ້ອງ ຍ່ອມບັນລຸເຈໂຕສະມາທິໂດຍປະການທີ່ເມື່ອຈິດຕັ້ງໝັ້ນແລ້ວ ຍ່ອມເຫັນບຸກຄົນນັ້ນ ຜູ້ມັກຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເພ່ງເລັງຢາກໄດ້ສິ່ງຂອງຂອງເຂົາ ມີຈິດພະຍາບາດ ເປັນມິດສາທິດຖິໃນໂລກນີ້ ຫຼັງຈາກຕາຍແລ້ວໄດ້ໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ສະມະນະຫຼືພາມນັ້ນ ຈຶ່ງກ່າວແນວນີ້ວ່າ “ທ່ານຜູ້ຈະເລີນ ໄດ້ຂ່າວວ່າ ກຳຊົ່ວມີວິບາກຂອງທຸດຈະຣິດມີ ຂ້າພະເຈົ້າໄດ້ເຫັນບຸກຄົນນັ້ນ ຜູ້ມັກຂ້າສັດ ລັກຊັບ ປະພຶດຜິດໃນກາມ ຯລຯ ເປັນມິດສາທິດຖິໃນໂລກນີ້ ຫຼັງຈາກຕາຍແລ້ວໄດ້ໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ” ແລ້ວກ່າວແນວນີ້ວ່າ “ທ່ານຜູ້ຈະເລີນ ໄດ້ຂ່າວວ່າ ບຸກຄົນໃດມັກຂ້າສັດ ລັກຊັບ ຯລຯ ເປັນມິດສາທິດຖິ ບຸກຄົນນັ້ນທັງໝົດຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ຊົນເຫຼົ່າໃດຮູ້ແນວນີ້ ຊົນເຫຼົ່ານັ້ນຊື່ວ່າ ຮູ້ຊອບ ຊົນເຫຼົ່າໃດຮູ້ນອກເໜືອໄປຈາກນັ້ນ ຊົນເຫຼົ່ານັ້ນຊື່ວ່າ ຮູ້ຜິດ”

ສະມະນະຫຼືພາມນັ້ນ ຈະເວົ້າປັກໃຈລົງໄປເຖິງເລື້ອງທີ່ເຂົາຮູ້ເອງ ເຫັນເອງ ຮູ້ເອງ ຕາມແຮງຈູງໃຈ ຕາມຄວາມປັກໃຈໃນເລື້ອງນັ້ນດັ່ງນີ້ວ່າ “ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ”

໒. ສ່ວນສະມະນະຫຼືພາມລາງຄົນໃນໂລກນີ້ ອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນຍິ່ງ ຄວາມພະຍາຍາມ ຄວາມບໍ່ຜະໝາດ ຄວາມໃສ່ໃຈໂດຍຖືກຕ້ອງ ຍ່ອມບັນລຸເຈໂຕສະມາທິໂດຍປະການທີ່ເມື່ອຈິດຕັ້ງໝັ້ນແລ້ວ ຍ່ອມເຫັນບຸກຄົນນັ້ນ ຜູ້ມັກຂ້າສັດ ລັກຊັບ ຯລຯ ເປັນມິດສາທິດຖິໃນໂລກນີ້ ຫຼັງ

ຈາກຕາຍແລ້ວໄດ້ໄປເກີດໃນສຸຄະຕິໂລກສະຫວັນ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ສະມະນະຫຼືພາມນັ້ນຈຶ່ງກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ໄດ້ຂ່າວວ່າ ກຳຊົ່ວບໍ່ມີ ວິບາກຂອງທຸດຈະຣິດບໍ່ມີ ຂ້າພະເຈົ້າໄດ້ເຫັນບຸກຄົນນັ້ນ ຜູ້ມັກຂ້າສັດ ລັກຊັບ ໆລໆ ເປັນມິດສາທິດຖິໃນໂລກນີ້ ຫຼັງຈາກຕາຍແລ້ວໄດ້ໄປເກີດໃນສຸຄະຕິໂລກສະຫວັນ" ແລ້ວກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ໄດ້ຂ່າວວ່າ ບຸກຄົນໃດມັກຂ້າສັດ ລັກຊັບ ໆລໆ ເປັນມິດສາທິດຖິ ບຸກຄົນນັ້ນທັງໝົດຫຼັງຈາກຕາຍແລ້ວຈະໄປເກີດໃນສຸຄະຕິໂລກສະຫວັນ ຊົນເຫຼົ່າໃດຮູ້ແນວນີ້ ຊົນເຫຼົ່ານັ້ນຊື່ວ່າຮູ້ຊອບ ຊົນເຫຼົ່າໃດຮູ້ນອກເໜືອໄປ ຊົນເຫຼົ່ານັ້ນຊື່ວ່າຮູ້ຜິດ"

ສະມະນະຫຼືພາມນັ້ນ ຈະເວົ້າປັກໃຈລົງໄປເຖິງເລື້ອງທີ່ເຂົາຮູ້ເອງ ເຫັນເອງ ຮູ້ເອງ ຕາມແຮງຈູງໃຈ ຕາມຄວາມປັກໃຈໃນເລື້ອງນັ້ນດັ່ງນີ້ວ່າ "ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

໓. ສະມະນະຫຼືພາມລາງຄົນໃນໂລກນີ້ ອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນຍິ່ງ ຄວາມພະຍາຍາມ ຄວາມບໍ່ຜະໝາດ ຄວາມໃສ່ໃຈໂດຍຖືກຕ້ອງ ຍ່ອມບັນລຸເຈໂຕສະມາທິໂດຍປະການທີ່ເມື່ອຈິດຕັ້ງໝັ້ນແລ້ວ ຍ່ອມເຫັນບຸກຄົນນັ້ນ ຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຢາກໄດ້ສິ່ງຂອງຂອງເຂົາ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິໃນໂລກນີ້ ຫຼັງຈາກຕາຍແລ້ວໄດ້ໄປເກີດໃນສຸຄະຕິໂລກສະຫວັນດ້ວຍຕາທິບອັນບໍລິສຸດເໜືອມະນຸດ" ສະມະນະຫຼືພາມນັ້ນຈຶ່ງກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ໄດ້ຂ່າວວ່າ ກຳດີມີຈິງ ວິບາກຂອງສຸຈະຣິດມີຈິງ ຂ້າພະເຈົ້າໄດ້ເຫັນບຸກຄົນນັ້ນ ຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ໆລໆ ເປັນສຳມາທິດຖິໃນໂລກນີ້ ຫຼັງຈາກຕາຍແລ້ວໄດ້ໄປເກີດໃນສຸຄະຕິໂລກສະຫວັນ ແລ້ວກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ໄດ້ຂ່າວວ່າ ບຸກຄົນໃດເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ໆ ລໆ ເປັນສຳມາທິດຖິ ບຸກຄົນນັ້ນທັງໝົດຫຼັງຈາກຕາຍແລ້ວຈະໄປເກີດໃນສຸຄະຕິໂລກສະຫວັນ ຊົນເຫຼົ່າໃດຮູ້ແນວນີ້ ຊົນເຫຼົ່ານັ້ນຊື່ວ່າຮູ້ຊອບ ຊົນເຫຼົ່າໃດຮູ້ນອກເໜືອໄປ ຊົນເຫຼົ່ານັ້ນຊື່ວ່າຮູ້ຜິດ"

ສະມະນະຫຼືພາມນັ້ນ ຈະເວົ້າປັກໃຈລົງໄປເຖິງເລື້ອງທີ່ເຂົາຮູ້ເອງ ເຫັນເອງ ຮູ້ເອງ ຕາມແຮງຈູງໃຈ ຕາມຄວາມປັກໃຈໃນເລື້ອງນັ້ນດັ່ງນີ້ວ່າ "ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

໔. ສະມະນະຫຼືພາມລາງຄົນໃນໂລກນີ້ ອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນຍິ່ງ ຄວາມພະຍາຍາມ ຄວາມບໍ່ຜະໝາດ ຄວາມໃສ່ໃຈໂດຍຖືກຕ້ອງ ຍ່ອມບັນລຸເຈໂຕສະມາທິໂດຍປະການທີ່ເມື່ອຈິດຕັ້ງໝັ້ນແລ້ວ ຍ່ອມເຫັນບຸກຄົນນັ້ນ ຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ຯລຯ ເປັນສຳມາທິດຖິໃນໂລກນີ້ ຫຼັງຈາກຕາຍແລ້ວໄດ້ໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ສະມະນະຫຼືພາມນັ້ນຈຶ່ງກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ໄດ້ຂ່າວວ່າ ກຳດີບໍ່ມີ ວິບາກຂອງສຸຈະຣິດບໍ່ມີ ຂ້າພະເຈົ້າໄດ້ເຫັນບຸກຄົນນັ້ນ ຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ຯລຯ ເປັນສຳມາທິດຖິໃນໂລກນີ້ ຫຼັງຈາກຕາຍແລ້ວໄດ້ໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ" ແລ້ວກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ໄດ້ຂ່າວວ່າ ບຸກຄົນໃດເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ຯລຯ ເປັນສຳມາທິດຖິ ບຸກຄົນນັ້ນທັງໝົດຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ຊົນເຫຼົ່າໃດຮູ້ແນວນີ້ ຊົນເຫຼົ່ານັ້ນຊື່ວ່າຮູ້ຊອບ ຊົນເຫຼົ່າໃດຮູ້ນອົກເໜືອໄປ ຊົນເຫຼົ່ານັ້ນຊື່ວ່າຮູ້ຜິດ"

ສະມະນະຫຼືພາມນັ້ນຈະເວົ້າປັກໃຈລົງໄປເຖິງເລື້ອງທີ່ເຂົາຮູ້ເອງ ເຫັນເອງ ຮູ້ເອງ ຕາມແຮງຈູງໃຈ ຕາມຄວາມປັກໃຈໃນເລື້ອງນັ້ນດັ່ງນີ້ວ່າ "ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

[໓໐໔] ອານົນ

໑. ບັນດາສະມະນະຫຼືພາມ ໔ ຈຳພວກນັ້ນ ເຮົາຄວນຕາມວາທະຂອງສະມະນະຫຼືພາມຜູ້ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ໄດ້ຂ່າວວ່າ ກຳຊົ່ວມີ ວິບາກຂອງທຸດຈະຣິດມີ" ເຮົາຄວນຕາມແມ່ນວາທະຂອງເຂົາຜູ້ກ່າວແນວນີ້ວ່າ "ຂ້າພະເຈົ້າໄດ້ເຫັນບຸກຄົນນັ້ນ ຜູ້ມັກຂ້າສັດ ລັກຊັບ ຯ ລຯ ເປັນມິດສາທິດຖິໃນໂລກນີ້ ຫຼັງຈາກຕາຍແລ້ວໄດ້ໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ" ແຕ່ເຮົາບໍ່ຄວນຕາມວາທະຂອງເຂົາຜູ້ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ໄດ້ຂ່າວວ່າ ບຸກຄົນໃດເປັນຜູ້ຂ້າສັດ ລັກຊັບ ຯລຯ ເປັນມິດສາທິດຖິ ບຸກຄົນນັ້ນທັງໝົດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ"

ເຮົາບໍ່ຄວນຕາມແມ່ນວາທະຂອງເຂົາຜູ້ກ່າວແນວນີ້ວ່າ "ຊົນເຫຼົ່າໃດຮູ້ແນວນີ້ ຊົນເຫຼົ່ານັ້ນຊື່ວ່າຮູ້ຊອບ ຊົນເຫຼົ່າໃດຮູ້ນອກເໜືອໄປ ຊົນເຫຼົ່ານັ້ນຊື່ວ່າຮູ້ຜິດ" ເຮົາບໍ່ຄວນຕາມ ແມ່ນວາທະຂອງເຂົາທີ່ເວົ້າປັກໃຈລົງໄປເຖິງເລື້ອງທີ່ເຂົາຮູ້ເອງ ເຫັນເອງ ຮູ້ເອງ ຕາມແຮງຈູງໃຈ ຕາມຄວາມປັກໃຈໃນເລື້ອງນັ້ນວ່າ"ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຕະຖາຄົດມີຄວາມຮູ້ໃນມະຫາກຳມະວິພັງເປັນແນວອື່ນ

໔. ບັນດາສະມະນະພຼີພາມ ໔ ຈຳພວກນັ້ນ ເຮົາບໍ່ຄວນຕາມວາທະ ຂອງສະມະນະພຼີພາມຜູ້ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ໄດ້ຂ່າວວ່າ ກຳຊົ່ວບໍ່ມີ ວິບາກຂອງທຸດຈະຣິດບໍ່ມີ" ເຮົາຄວນຕາມວາທະຂອງເຂົາຜູ້ກ່າວແນວນີ້ວ່າ "ຂ້າພະເຈົ້າໄດ້ເຫັນບຸກຄົນນັ້ນ ຜູ້ມັກຂ້າສັດ ລັກຊັບ ຯລຯ ເປັນມິດສາທິດຖິໃນໂລກນີ້ ຫຼັງຈາກຕາຍແລ້ວໄດ້ໄປເກີດໃນສຸຄະຕິໂລກສະຫວັນ" ແຕ່ເຮົາບໍ່ຄວນຕາມວາທະຂອງເຂົາຜູ້ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ໄດ້ຂ່າວວ່າ ບຸກຄົນໃດມັກຂ້າສັດ ລັກຊັບ ຯລຯ ເປັນມິດສາທິດຖິ ບຸກຄົນນັ້ນທັງໝົດຫຼັງຈາກຕາຍແລ້ວຈະໄປເກີດໃນສຸຄະຕິໂລກສະຫວັນ" ເຮົາບໍ່ຄວນຕາມແມ່ນວາທະຂອງເຂົາຜູ້ກ່າວແນວນີ້ວ່າ "ຊົນເຫຼົ່າໃດຮູ້ແນວນີ້ ບຸກຄົນເຫຼົ່ານັ້ນຊື່ວ່າຮູ້ຊອບ ຊົນເຫຼົ່າໃດຮູ້ນອກເໜືອໄປ ຊົນເຫຼົ່ານັ້ນຊື່ວ່າຮູ້ຜິດ" ເຮົາບໍ່ຄວນຕາມແມ່ນວາທະຂອງເຂົາທີ່ເວົ້າປັກໃຈລົງໄປເຖິງເລື້ອງທີ່ເຂົາຮູ້ເອງ ເຫັນເອງ ຮູ້ເອງ ຕາມແຮງຈູງໃຈຕາມຄວາມປັກໃຈໃນເລື້ອງນັ້ນວ່າ "ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຕະຖາຄົດມີຄວາມຮູ້ໃນມະຫາກັມມະວິພັງເປັນແນວອື່ນ

໓. ບັນດາສະມະນະພຼີພາມທັງ ໔ ຈຳພວກນັ້ນ ເຮົາຄວນຕາມວາທະ ຂອງສະມະນະພຼີພາມຜູ້ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ໄດ້ຂ່າວວ່າ ກຳດີມີ ວິບາກຂອງສຸຈະຣິດມີ" ເຮົາຄວນຕາມວາທະຂອງເຂົາຜູ້ກ່າວແນວນີ້ວ່າ "ຂ້າພະເຈົ້າໄດ້ເຫັນບຸກຄົນນັ້ນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ຯລຯ ເປັນສຳມາທິດຖິໃນໂລກນີ້ ຫຼັງຈາກຕາຍແລ້ວໄດ້ໄປເກີດໃນສຸຄະຕິໂລກສະຫວັນ" ແລະເຮົາກໍຄວນຕາມວາທະ ຂອງເຂົາ ຜູ້ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ໄດ້ຂ່າວວ່າ ບຸກຄົນໃດເວັ້ນຂາດຈາກການຂ້າສັດ ເວັ້ນຂາດ

ຈາກການລັກຊັບ ຯລຯ ເປັນສຳມາທິດຖິ ບຸກຄົນນັ້ນທັງໝົດຫຼັງຈາກຕາຍ ແລ້ວຈະໄປເກີດໃນສຸຄະຕິໂລກສະຫວັນ" ແຕ່ເຮົາບໍ່ຄວນຕາມແມ່ນວາທະ ຂອງເຂົາຜູ້ກ່າວແນວນີ້ວ່າ "ຊົນເຫຼົ່າໃດຮູ້ແນວນີ້ ຊົນເຫຼົ່ານັ້ນຊື່ວ່າຮູ້ຊອບ ຊົນ ເຫຼົ່າໃດຮູ້ນອກເໜືອໄປ ຊົນເຫຼົ່ານັ້ນຊື່ວ່າຮູ້ຜິດ" ເຮົາບໍ່ຄວນຕາມແມ່ນວາທະ ຂອງເຂົາທີ່ເວົ້າປັກໃຈລົງໄປເຖິງເລື້ອງທີ່ເຂົາຮູ້ເອງ ເຫັນເອງ ຮູ້ເອງ ຕາມ ແຮງຈູງໃຈ ຕາມຄວາມປັກໃຈໃນເລື້ອງນັ້ນວ່າ "ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຕະຖາຄົດມີຄວາມຮູ້ໃນມະຫາກຳມະວິພັງເປັນແນວອື່ນ

໔. ບັນດາສະມະນະຫຼືພາມທັງ ໔ ຈຳພວກນັ້ນ ເຮົາບໍ່ຄວນຕາມວາທະຂອງສະ ມະນະຫຼືພາມຜູ້ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ໄດ້ຂ່າວວ່າ ກຳດີບໍ່ມີ ວິບາກ ຂອງສຸຈະຣິດບໍ່ມີ" ເຮົາຄວນຕາມວາທະຂອງເຂົາຜູ້ກ່າວແນວນີ້ວ່າ "ຂ້າພະ ເຈົ້າໄດ້ເຫັນບຸກຄົນນັ້ນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ຯລຯ ເປັນສຳມາທິດຖິໃນໂລກນີ້ ຫຼັງຈາກຕາຍແລ້ວໄດ້ໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ" ແຕ່ເຮົາບໍ່ຄວນຕາມວາທະຂອງເຂົາຜູ້ກ່າວແນວນີ້ ວ່າ "ທ່ານຜູ້ຈະເລີນ ໄດ້ຂ່າວວ່າ ບຸກຄົນໃດເວັ້ນຂາດຈາກການຂ້າສັດ ເວັ້ນ ຂາດຈາກການລັກຊັບ ຯລຯ ເປັນສຳມາທິດຖິ ບຸກຄົນນັ້ນທັງໝົດຫຼັງຈາກ ຕາຍແລ້ວຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ" ເຮົາບໍ່ຄວນຕາມ ແມ່ນວາທະຂອງເຂົາຜູ້ກ່າວແນວນີ້ວ່າ "ຊົນເຫຼົ່າໃດຮູ້ແນວນີ້ ຊົນເຫຼົ່ານັ້ນຊື່ວ່າ ຮູ້ຊອບ ຊົນເຫຼົ່າໃດຮູ້ນອກເໜືອໄປ ຊົນເຫຼົ່ານັ້ນຊື່ວ່າຮູ້ຜິດ" ເຮົາບໍ່ຄວນຕາມ ແມ່ນວາທະຂອງເຂົາທີ່ເວົ້າປັກໃຈລົງໄປເຖິງເລື້ອງທີ່ເຂົາຮູ້ເອງ ເຫັນເອງ ຮູ້ ເອງ ຕາມແຮງຈູງໃຈ ຕາມຄວາມປັກໃຈໃນເລື້ອງນັ້ນວ່າ "ນີ້ທີ່ນັ້ນຈິງ ແນວ ອື່ນບໍ່ຈິງ"

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຕະຖາຄົດມີຄວາມຮູ້ໃນມະຫາກຳມະວິພັງເປັນແນວອື່ນ

[໓໐໓] ອານົນ

໑. ບັນດາບຸກຄົນ ໔ ຈຳພວກນັ້ນ ບຸກຄົນໃດເປັນຜູ້ມັກຂ້າສັດ ລັກຊັບ ຯລຯ ເປັນມິດສາທິດຖິໃນໂລກນີ້ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນອະບາຍ ທຸຄະຕິ

ວິນິບາດ ນະຮົກ ບຸກຄົນນັ້ນຫຼັງຈາກຕາຍແລ້ວໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ຍ້ອນບາບກຳທີ່ເຂົາເຮັດໄວ້ໃນຊາດກ່ອນ ໃຫ້ຜົນເປັນທຸກ ບາບກຳທີ່ເຂົາເຮັດໄວ້ໃນພາຍຫຼັງໃຫ້ຜົນເປັນທຸກ ຫຼືໃນເວລາຈະຕາຍ ເຂົາມີມິດສາທິດຖິທີ່ໃຫ້ບໍລິບູນຍຶດໝັ້ນໄວ້ ແຕ່ການທີ່ບຸກຄົນເປັນຜູ້ມັກຂ້າສັດ ລັກຊັບ ໆລໆ ເປັນມິດສາທິດຖິໃນໂລກນີ້ ເຂົາຍ່ອມສະເຫວີຍວິບາກແຫ່ງກຳນັ້ນໃນຊາດນີ້ແດ່ ໃນຊາດໜ້າແດ່ ໃນຊາດຕໍ່ ໆ ໄປແດ່

៨. ບັນດາບຸກຄົນ ៤ ຈຳພວກນັ້ນ ບຸກຄົນໃດເປັນຜູ້ມັກຂ້າສັດ ລັກຊັບ ໆລໆ ເປັນມິດສາທິດຖິໃນໂລກນີ້ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນສຸຄະຕິໂລກສະຫວັນ ບຸກຄົນນັ້ນຫຼັງຈາກຕາຍແລ້ວໄປເກີດໃນສຸຄະຕິໂລກສະຫວັນ ຍ້ອນກຳດີທີ່ເຂົາເຮັດໄວ້ໃນຊາດກ່ອນໃຫ້ຜົນເປັນສຸກ ກຳດີທີ່ເຂົາເຮັດໄວ້ໃນພາຍຫຼັງໃຫ້ຜົນເປັນສຸກ ຫຼືໃນເວລາຈະຕາຍ ເຂົາມີສຳມາທິດຖິທີ່ໃຫ້ບໍລິບູນຍຶດໝັ້ນໄວ້ ແຕ່ການທີ່ບຸກຄົນເປັນຜູ້ມັກຂ້າສັດ ລັກຊັບ ໆລໆ ເປັນມິດສາທິດຖິໃນໂລກນີ້ ເຂົາຍ່ອມສະເຫວີຍວິບາກແຫ່ງກຳນັ້ນ ໃນຊາດນີ້ແດ່ ໃນຊາດໜ້າແດ່ ໃນຊາດຕໍ່ ໆ ໄປແດ່

៣. ບັນດາບຸກຄົນ ៤ ຈຳພວກນັ້ນ ບຸກຄົນໃດເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ໆລໆ ເປັນສຳມາທິດຖິໃນໂລກນີ້ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນສຸຄະຕິໂລກສະຫວັນ ບຸກຄົນນັ້ນຫຼັງຈາກຕາຍແລ້ວໄປເກີດໃນສຸຄະຕິໂລກສະຫວັນ ຍ້ອນກຳດີທີ່ເຂົາເຮັດໄວ້ໃນຊາດກ່ອນໃຫ້ຜົນເປັນສຸກ ກຳດີທີ່ເຂົາເຮັດໄວ້ໃນພາຍຫຼັງໃຫ້ຜົນເປັນສຸກ ຫຼືໃນເວລາຈະຕາຍ ເຂົາມີສຳມາທິດຖິທີ່ໃຫ້ບໍລິບູນຍຶດໝັ້ນໄວ້ ແຕ່ການທີ່ບຸກຄົນເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ໆລໆ ເປັນສຳມາທິດຖິໃນໂລກນີ້ ເຂົາສະເຫວີຍວິບາກແຫ່ງກຳນັ້ນໃນຊາດນີ້ແດ່ ໃນຊາດໜ້າແດ່ ໃນຊາດຕໍ່ ໆ ໄປແດ່

៤. ບັນດາບຸກຄົນ ៤ ຈຳພວກນັ້ນ ບຸກຄົນໃດເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ໆລໆ ເປັນສຳມາທິດຖິໃນໂລກນີ້ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ບຸກຄົນນັ້ນຫຼັງຈາກຕາຍແລ້ວໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ຍ້ອນບາບກຳທີ່ເຂົາເຮັດໄວ້ໃນຊາດກ່ອນໃຫ້ຜົນເປັນທຸກ ບາບກຳທີ່ເຂົາເຮັດໄວ້ໃນພາຍຫຼັງໃຫ້ຜົນເປັນທຸກ ຫຼືໃນເວລາຈະຕາຍ ມີມິດສາທິດຖິທີ່ເຂົາ ໃຫ້ບໍລິບູນຍຶດໝັ້ນໄວ້ ແຕ່

> ການທີ່ບຸກຄົນເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ຯລຯ ເປັນສຳມາທິດຖິໃນໂລກນີ້ ເຂົາຍ່ອມສະເຫວີຍວິບາກແຫ່ງກຳນັ້ນໃນຊາດນີ້ແດ່ ໃນຊາດໜ້າແດ່ ໃນຊາດຕໍ່ ໆ ໄປແດ່

ອານົນ ກຳທີ່ບໍ່ຄວນສ່ອງໃຫ້ເຫັນວ່າບໍ່ຄວນກໍມີຢູ່ ກຳທີ່ບໍ່ຄວນສ່ອງໃຫ້ເຫັນວ່າຄວນກໍມີຢູ່ ກຳທີ່ຄວນສ່ອງໃຫ້ເຫັນວ່າຄວນກໍມີຢູ່ ແລະ ກຳທີ່ຄວນສ່ອງໃຫ້ເຫັນວ່າບໍ່ຄວນກໍມີຢູ່ ດັ່ງພັນນາມາຢ່າງນີ້"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະອານົນ ມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ມະຫາກຳມະວິພັງຄະສູດທີ ໖ ຈົບ**

# ໗. ສະລາຍະຕະນະວິພັງຄະສູດ

## ວ່າດ້ວຍການຈຳແນກອາຍະຕະນະ ໖ ປະການ

[໓໐໔] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ພິກຂຸທັງຫຼາຍ ເຮົາຈັກສະແດງສະລາຍະຕະນະວິພັງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງສະລາຍະຕະນະວິພັງນັ້ນ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

"ທ່ານທັງຫຼາຍ ເພິ່ງຮູ້ອາຍະຕະນະພາຍໃນ ໖ ອາຍະຕະນະພາຍນອກ ໖ ໝວດວິ ຍານ ໖ ໝວດ ຜັດສະ ໖ ມະໂນປະວິຈານ ໑໘ ສັດຕະບົດ໌ ໓໖ ໃນທຳເຫຼົ່ານັ້ນ ທ່ານທັງຫຼາຍອາໄສທຳນີ້ແລ້ວ ຈົ່ງລະທຳນີ້ສາ ແລະ ເພິ່ງຮູ້ສະຕິປັດຖານ ໓ ທີ່ພຣະອະຣິຍະເສບເຊິ່ງເມື່ອເສບຢູ່ຊື່ວ່າເປັນສາດສະດາຄວນເພື່ອສັ່ງສອນຄະນະ ພຣະອະຣິຍະສາດສະດານັ້ນ ອັນເຮົາຮຽກວ່າເປັນສາຣະຖີຜູ້ສາມາດເຝິກບຸຣຸດທີ່ຄວນເຝິກໄດ້ຢ່າງປະເສີດກວ່າອາຈານຜູ້ເຝິກທັງຫຼາຍ ນີ້ເປັນອຸດເທດແຫ່ງສະລາຍະຕະນະວິພັງ

[໓໐໕] ເຮົາກ່າວຄຳນີ້ໄວ້ວ່າ “ເພິ່ງຮູ້ອາຍະຕະນະພາຍໃນ ໖” ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ຄື

໑. ຈັກຂວາຍະຕະນະ (ອາຍະຕະນະຄືຕາ)
໒. ໂສຕາຍະຕະນະ (ອາຍະຕະນະຄືຫູ)
໓. ຄານາຍະຕະນະ (ອາຍະຕະນະຄືດັງ)
໔. ຊິວຫາຍະຕະນະ (ອາຍະຕະນະຄືລີ້ນ)
໕. ກາຍາຍະຕະນະ (ອາຍະຕະນະຄືກາຍ)
໖. ມະນາຍະຕະນະ (ອາຍະຕະນະຄືໃຈ)[໑]

ຄຳທີ່ເຮົາກ່າວໄວ້ວ່າ “ເພິ່ງຮູ້ອາຍະຕະນະພາຍໃນ ໖” ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້ (໑)

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ “ເພິ່ງຮູ້ອາຍະຕະນະພາຍນອກ ໖” ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ຄື

໑. ຣູປາຍະຕະນະ (ອາຍະຕະນະຄືຮູບ)
໒. ສັດທາຍະຕະນະ (ອາຍະຕະນະຄືສຽງ)
໓. ຄັນທາຍະຕະນະ (ອາຍະຕະນະຄືກິ່ນ)
໔. ຣະສາຍະຕະນະ (ອາຍະຕະນະຄືຣົດ)
໕. ໂຜດຖັບພາຍະຕະນະ (ອາຍະຕະນະຄືສຳຜັດ)
໖. ທຳມາຍະຕະນະ (ອາຍະຕະນະຄືທຳມາຣົມ)

ຄຳທີ່ເຮົາກ່າວໄວ້ວ່າ “ເພິ່ງຮູ້ອາຍະຕະນະພາຍນອກ ໖” ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້ (໒)

ເຮົາກ່າວຄຳນີ້ໄວ້ວ່າ “ເພິ່ງຮູ້ໝວດວິນຍານ ໖” ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ຄື

໑. ຈັກຂຸວິນຍານ (ຄວາມຮູ້ແຈ້ງອາລົມທາງຕາ)
໒. ໂສຕະວິນຍານ (ຄວາມຮູ້ແຈ້ງອາລົມທາງຫູ)
໓. ຄານະວິນຍານ (ຄວາມຮູ້ແຈ້ງອາລົມທາງດັງ)
໔. ຊິວຫາວິນຍານ (ຄວາມຮູ້ແຈ້ງອາລົມທາງລີ້ນ)
໕. ກາຍວິນຍານ (ຄວາມຮູ້ແຈ້ງອາລົມທາງກາຍ)
໖. ມະໂນວິນຍານ (ຄວາມຮູ້ແຈ້ງອາລົມທາງໃຈ)

ຄຳທີ່ເຮົາກ່າວໄວ້ວ່າ "ເພິ່ງຮູ້ໝວດວິນຍານ ໖" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້ (໓)

ເຮົາກ່າວຄຳນີ້ໄວ້ວ່າ "ເພິ່ງຮູ້ໝວດຜັດສະ ໖" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ຄື

໑. ຈັກຂຸສຳຜັດ (ສຳຜັດທາງຕາ)
໒. ໂສຕະສຳຜັດ (ສຳຜັດທາງຫູ)
໓. ຄານະສຳຜັດ (ສຳຜັດທາງດັງ)
໔. ຊິວຫາສຳຜັດ (ສຳຜັດທາງລີ້ນ)
໕. ກາຍສຳຜັດ (ສຳຜັດທາງກາຍ)
໖. ມະໂນສຳຜັດ (ສຳຜັດທາງໃຈ)

ຄຳທີ່ເຮົາກ່າວໄວ້ວ່າ "ເພິ່ງຮູ້ໝວດຜັດສະ ໖" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້ (໔)

ເຮົາກ່າວຄຳນີ້ໄວ້ວ່າ "ເພິ່ງຮູ້ມະໂນປະວິຈານ ໑໘" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ຄື ບຸກຄົນເຫັນຮູບທາງຕາແລ້ວ ຍ່ອມນຶກໜ່ວງຮູບອັນເປັນທີ່ຕັ້ງແຫ່ງໂສມະນັດ ຍ່ອມນຶກໜ່ວງຮູບອັນເປັນທີ່ຕັ້ງແຫ່ງໂທມະນັດ ຍ່ອມນຶກໜ່ວງຮູບອັນເປັນທີ່ຕັ້ງແຫ່ງອຸເປກຂາໄວ້

ຟັງສຽງທາງຫູແລ້ວ ฯลฯ
ດົມກິ່ນທາງດັງແລ້ວ ฯลฯ
ຊີມຣົດທາງລີ້ນແລ້ວ ฯลฯ
ຖືກຕ້ອງໂຜດຖັບພະທາງກາຍແລ້ວ ฯลฯ

ຮູ້ແຈ້ງທຳມາຣົມທາງໃຈແລ້ວ ຍ່ອມນຶກໜ່ວງທຳມາຣົມອັນເປັນທີ່ຕັ້ງແຫ່ງໂສມະນັດ ຍ່ອມນຶກໜ່ວງທຳມາຣົມອັນເປັນທີ່ຕັ້ງແຫ່ງໂທມະນັດ ຍ່ອມນຶກໜ່ວງທຳມາຣົມອັນເປັນທີ່ຕັ້ງແຫ່ງອຸເປກຂາໄວ້

ຄວາມນຶກໜ່ວງຝ່າຍໂສມະນັດ ໖ ຝ່າຍໂທມະນັດ ໖ ຝ່າຍອຸເປກຂາ ໖ ຍ່ອມມີດ້ວຍປະການຢ່າງນີ້

ຄຳທີ່ເຮົາກ່າວໄວ້ວ່າ "ເພິ່ງຮູ້ມະໂນປະວິຈານ ໑໘" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້ (໕)

[໓໐໖] ເຮົາກ່າວຄຳນີ້ໄວ້ວ່າ "ເພິ່ງຮູ້ສັດຕະບົດ ໓໖" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ຄື ໂສມະນັດອາໄສເຮືອນ[1] ໖ ໂສມະນັດອາໄສເນກຂຳມະ[2] ໖ ໂທມະນັດອາໄສເຮືອນ ໖ ໂທມະນັດອາໄສເນກຂຳມະ ໖ ອຸເປກຂາອາໄສເຮືອນ ໖ ອຸເປກຂາ ອາໄສເນກຂຳມະ ໖

ໃນສັດຕະບົດ ໓໖ ນັ້ນ ໂສມະນັດອາໄສເຮືອນ ໖ ປະການ ອັນໃດແດ່ ຄື

໑. ໂສມະນັດຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ພິຈາລະນາເຫັນການໄດ້ສະເພາະເຊິ່ງ ຮູບທີ່ເພິ່ງຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ປະກອບດ້ວຍໂລກາມິດ ໂດຍເປັນຂອງອັນຕົນໄດ້ສະເພາະ ຫຼື ຫວນຣະນຶກເຖິງຮູບທີ່ຕົນເຄີຍໄດ້ມາກ່ອນ ອັນລ່ວງລັບ ດັບ ຜັນແປໄປແລ້ວ ໂສມະນັດແນວນີ້ເຮົາຮຽກວ່າ ໂສມະນັດອາໄສເຮືອນ
໒. ໂສມະນັດຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ພິຈາລະນາເຫັນການໄດ້ສະເພາະເຊິ່ງ ສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ
໓. ໂສມະນັດຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ພິຈາລະນາເຫັນການໄດ້ສະເພາະເຊິ່ງ ກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ
໔. ໂສມະນັດຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ພິຈາລະນາເຫັນການໄດ້ສະເພາະເຊິ່ງ ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ
໕. ໂສມະນັດຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ພິຈາລະນາເຫັນການໄດ້ສະເພາະເຊິ່ງ ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ຯລຯ
໖. ໂສມະນັດຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ພິຈາລະນາເຫັນການໄດ້ສະເພາະເຊິ່ງ ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ປະກອບດ້ວຍໂລກາມິດ ໂດຍເປັນຂອງອັນຕົນໄດ້ສະເພາະ ຫຼື ຫວນຣະນຶກເຖິງທຳມາຣົມທີ່ຕົນເຄີຍໄດ້ມາກ່ອນ ອັນລ່ວງລັບ ດັບ ຜັນແປໄປແລ້ວ ໂສມະນັດແນວນີ້ເຮົາຮຽກວ່າ ໂສມະນັດອາໄສເຮືອນ

ໂສມະນັດອາໄສເຮືອນ ໖ ປະການເປັນແນວນີ້

ໃນສັດຕະບົດ ໓໖ ນັ້ນ ໂສມະນັດອາໄສເນກຂຳມະ ໖ ປະການ ອັນໃດແດ່ ຄື

໑. ໂສມະນັດຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ຮູ້ຄວາມທີ່ຮູບທັງຫຼາຍນັ້ນແລ ບໍ່ທ່ຽງ ເຫັນຄວາມຜັນແປ ຄວາມຄາຍກຳໜັດ ແລະ ຄວາມດັບນັ້ນຕາມຄວາມເປັນຈິງ ດ້ວຍປັນຍາອັນຖືກຕ້ອງແນວນີ້ວ່າ “ຮູບໃນການກ່ອນ ແລະ ໃນບັດນີ້ທັງໝົດນັ້ນ ລ້ວນບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ” ໂສມະນັດແນວນີ້ເຮົາຮຽກວ່າ ໂສມະນັດອາໄສເນກຂຳມະ
໒. ໂສມະນັດຍ່ອມເກີດຂຶ້ນແກ່ບຸກຄົນຜູ້ຮູ້ຄວາມທີ່ ສຽງ ທັງຫຼາຍນັ້ນແລ ຯລຯ
໓. ໂສມະນັດຍ່ອມເກີດຂຶ້ນແກ່ບຸກຄົນຜູ້ຮູ້ຄວາມທີ່ ກິ່ນ ທັງຫຼາຍນັ້ນແລ ຯລຯ
໔. ໂສມະນັດຍ່ອມເກີດຂຶ້ນແກ່ບຸກຄົນຜູ້ຮູ້ຄວາມທີ່ ຣົດ ທັງຫຼາຍນັ້ນແລ ຯລຯ

៥. ໂສມະນັດຍ່ອມເກີດຂຶ້ນແກ່ບຸກຄົນຜູ້ຮູ້ຄວາມທີ່ ໂຜດຖັບພະ ທັງຫຼາຍນັ້ນແລ ฯລฯ

៦. ໂສມະນັດຍ່ອມເກີດຂຶ້ນແກ່ບຸກຄົນຜູ້ຮູ້ຄວາມທີ່ທຳມາຣົມທັງຫຼາຍນັ້ນແລ ບໍ່ທ່ຽງ ເຫັນຄວາມຜັນແປ ຄວາມຄາຍກຳໜັດ ແລະ ຄວາມດັບນັ້ນຕາມຄວາມເປັນຈິງ ດ້ວຍປັນຍາອັນຖືກຕ້ອງແນວນີ້ວ່າ "ທຳມາຣົມໃນການກ່ອນ ແລະ ໃນບັດນີ້ທັງໝົດນັ້ນ ລ້ວນບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ" ໂສມະນັດແນວນີ້ເຮົາຮຽກວ່າ ໂສມະນັດອາໄສເນກຂຳມະ

ໂສມະນັດອາໄສເນກຂຳມະ ៦ ປະການເປັນແນວນີ້

[៣០៧] ໃນສັດຕະບົດ ៣៦ ນັ້ນ ໂທມະນັດອາໄສເຮືອນ ៦ ປະການ ອັນໃດແດ່ ຄື

១. ໂທມະນັດຍ່ອມເກີດຂຶ້ນແກ່ບຸກຄົນຜູ້ເຫັນຄວາມບໍ່ໄດ້ສະເພາະເຊິ່ງ ຮູບ ທີ່ເພິ່ງຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ປະກອບດ້ວຍໂລກາມິດ ໂດຍຄວາມເປັນຂອງອັນຕົນບໍ່ໄດ້ສະເພາະ ຫຼື ຫວນຣະນຶກເຖິງຮູບທີ່ຕົນບໍ່ເຄີຍໄດ້ມາກ່ອນ ອັນລ່ວງລັບ ດັບ ຜັນແປໄປແລ້ວ ໂທມະນັດແນວນີ້ເຮົາຮຽກວ່າ ໂທມະນັດອາໄສເຮືອນ

២. ໂທມະນັດຍ່ອມເກີດຂຶ້ນແກ່ບຸກຄົນຜູ້ເຫັນຄວາມບໍ່ໄດ້ສະເພາະເຊິ່ງສຽງທີ່ເພິ່ງຮູ້ແຈ້ງທາງຫູ ฯລฯ

៣. ໂທມະນັດຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ເຫັນຄວາມບໍ່ໄດ້ສະເພາະເຊິ່ງ ກິ່ນ ທີ່ເພິ່ງຮູ້ແຈ້ງທາງດັງ ฯລฯ

៤. ໂທມະນັດຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ເຫັນຄວາມບໍ່ໄດ້ສະເພາະເຊິ່ງ ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນ ฯລฯ

៥. ໂທມະນັດຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ເຫັນຄວາມບໍ່ໄດ້ສະເພາະເຊິ່ງ ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ฯລฯ

៦. ໂທມະນັດຍ່ອມເກີດຂຶ້ນແກ່ບຸກຄົນຜູ້ເຫັນຄວາມບໍ່ໄດ້ສະເພາະເຊິ່ງ ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ປະກອບດ້ວຍໂລກາມິດ ໂດຍຄວາມເປັນຂອງອັນຕົນບໍ່ໄດ້ສະເພາະ ຫຼື ຫວນຣະນຶກເຖິງທຳມາຣົມທີ່ຕົນບໍ່ເຄີຍໄດ້ມາກ່ອນ ອັນລ່ວງລັບ ດັບ ຜັນແປໄປແລ້ວ ໂທມະນັດແນວນີ້ເຮົາຮຽກວ່າ ໂທມະນັດອາໄສເຮືອນ

ໂທມະນັດອາໄສເຮືອນ ៦ ປະການເປັນແນວນີ້

ໃນສັດຕະບົດ ໓໖ ນັ້ນ ໂທມະນັດອາໄສເນກຂຳມະ ໖ ປະການ ອັນໃດແດ່ ຄື

໑. ໂທມະນັດຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ຮູ້ຄວາມທີ່ຮູບທັງຫຼາຍນັ້ນແລ ບໍ່ທ່ຽງ ເຫັນຄວາມຜັນແປ ຄວາມຄາຍກຳໜັດ ແລະ ຄວາມດັບນັ້ນຕາມຄວາມເປັນຈິງ ດ້ວຍປັນຍາອັນຖືກຕ້ອງແນວນີ້ວ່າ "ຮູບໃນການກ່ອນແລະໃນບັດນີ້ທັງໝົດນັ້ນ ລ້ວນບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ" ແລ້ວຕັ້ງຄວາມປາຖະໜາໃນອະນຸດຕະຣະວິໂມກ[໗]ວ່າ "ໃນການໃດ ເຮົາຈັກບັນລຸອາຍະຕະນະ[໘] ທີ່ພຣະອະຣິຍະທັງຫຼາຍ ໄດ້ບັນລຸຢູ່ໃນບັດນີ້" ຍ້ອນຄວາມປາຖະໜາເປັນປັດໄຈ ໂທມະນັດຈຶ່ງເກີດຂຶ້ນແກ່ບຸກຄົນຜູ້ຕັ້ງຄວາມປາຖະໜາໃນອະນຸດຕະຣະວິໂມກດ້ວຍປະການຢ່າງນີ້ ໂທມະນັດແນວນີ້ເຮົາຮຽກວ່າ ໂທມະນັດອາໄສເນກຂຳມະ
໒. ໂທມະນັດຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ຮູ້ຄວາມທີ່ ສຽງ ທັງຫຼາຍນັ້ນແລ ฯລฯ
໓. ໂທມະນັດຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ຮູ້ຄວາມທີ່ ກິ່ນ ທັງຫຼາຍນັ້ນແລ ฯລฯ
໔. ໂທມະນັດຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ຮູ້ຄວາມທີ່ ຣົດ ທັງຫຼາຍນັ້ນແລ ฯລฯ
໕. ໂທມະນັດຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ຮູ້ຄວາມທີ່ໂຜດຖັບພະທັງຫຼາຍນັ້ນແລ ฯລฯ
໖. ໂທມະນັດຍ່ອມເກີດຂຶ້ນແກ່ບຸກຄົນຜູ້ຮູ້ຄວາມທີ່ທຳມາຣົມທັງຫຼາຍນັ້ນແລບໍ່ທ່ຽງ ເຫັນຄວາມຜັນແປ ຄວາມຄາຍກຳໜັດ ແລະ ຄວາມດັບນັ້ນຕາມຄວາມເປັນຈິງ ດ້ວຍປັນຍາອັນຖືກຕ້ອງແນວນີ້ວ່າ "ທຳມາຣົມໃນການກ່ອນ ແລະ ໃນບັດນີ້ທັງໝົດນັ້ນ ລ້ວນບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ" ແລ້ວຕັ້ງຄວາມປາຖະໜາໃນອະນຸດຕະຣະວິໂມກວ່າ "ໃນການໃດ ເຮົາຈັກບັນລຸອາຍະຕະນະທີ່ພຣະອະຣິຍະທັງຫຼາຍໄດ້ບັນລຸຢູ່ໃນບັດນີ້" ຍ້ອນຄວາມປາຖະໜາເປັນປັດໄຈ ໂທມະນັດຈຶ່ງເກີດຂຶ້ນແກ່ເຂົາຜູ້ຕັ້ງຄວາມປາຖະໜາໃນອະນຸດຕະຣະວິໂມກດ້ວຍປະການຢ່າງນີ້ ໂທມະນັດແນວນີ້ເຮົາຮຽກວ່າ ໂທມະນັດອາໄສເນກຂຳມະ

ໂທມະນັດອາໄສເນກຂຳມະ ໖ ປະການເປັນແນວນີ້

[໓໐໗] ໃນສັດຕະບົດ ໓໖ ນັ້ນ ອຸເປກຂາອາໄສເຮືອນ[໑] ໖ ປະການ ອັນໃດແດ່ ຄື

໑. ຍ້ອນເຫັນຮູບທາງຕາ ອຸເປກຂາ[໒]ຈຶ່ງເກີດຂຶ້ນແກ່ປຸຖຸຊົນ ຜູ້ໂງ່ຈ້າ ງົມງວາຍ ຜູ້ຍັງບໍ່ຊະນະກິເລດ ຍັງບໍ່ຊະນະວິບາກ ຜູ້ບໍ່ເຫັນໂທດ ບໍ່ໄດ້ສະດັບ ເປັນຄົນກິເລດໜາ ອຸເປກຂາແນວນີ້ຍັງລ່ວງພົ້ນຮູບບໍ່ໄດ້ ຍ້ອນແນວນັ້ນ ເຮົາຈຶ່ງຮຽກ

ອຸເປກຂານັ້ນວ່າ ອຸເປກຂາອາໄສເຮືອນ

໒. ຍ້ອນຟັງສຽງທາງຫູ ຯລຯ

໓. ຍ້ອນດົມກິ່ນທາງດັງ ຯລຯ

໔. ຍ້ອນຊີມຣົດທາງລີ້ນ ຯລຯ

໕. ຍ້ອນຖືກຕ້ອງໂຜດຖັບພະທາງກາຍ ຯລຯ

໖. ຍ້ອນຮູ້ແຈ້ງທຳມາຣົມທາງໃຈ ອຸເປກຂາຈຶ່ງເກີດຂຶ້ນແກ່ປຸຖຸຊົນ ຜູ້ໂງ່ຈ້າ ງົມງວາຍ ຜູ້ຍັງບໍ່ຊະນະກິເລດ ຍັງບໍ່ຊະນະວິບາກ ຜູ້ບໍ່ເຫັນໂທດ ບໍ່ໄດ້ສະດັບ ເປັນຄົນກິເລດໜາ ອຸເປກຂາເຊັ່ນນັ້ນ ຍັງລ່ວງພົ້ນທຳມາຣົມບໍ່ໄດ້ ຍ້ອນແນວນັ້ນ ເຮົາຈຶ່ງຮຽກອຸເປກຂານັ້ນວ່າ ອຸເປກຂາອາ ໄສເຮືອນ

ອຸເປກຂາອາໄສເຮືອນ ໖ ປະການເປັນແນວນີ້

ໃນສັດຕະບົດ ໓໖ ນັ້ນ ອຸເປກຂາອາໄສເນກຂຳມະ໑ ໖ ປະການ ອັນໃດແດ່ ຄື

໑. ອຸເປກຂາຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ຮູ້ຄວາມທີ່ຮູບທັງຫຼາຍນັ້ນແລ ບໍ່ທ່ຽງ ເຫັນຄວາມຜັນແປ ຄວາມຄາຍກຳໜັດ ແລະ ຄວາມດັບນັ້ນຕາມຄວາມເປັນຈິງ ດ້ວຍປັນຍາອັນຖືກ ຕ້ອງແນວນີ້ວ່າ "ຮູບໃນການກ່ອນແລະໃນບັດນີ້ທັງໝົດນັ້ນ ລ້ວນບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ" ອຸເປກຂາແນວນີ້ນັ້ນ ຍ່ອມລ່ວງພົ້ນຮູບໄດ້ ຍ້ອນແນວນັ້ນ ເຮົາຈຶ່ງຮຽກອຸເປກຂານັ້ນວ່າ ອຸເປກຂາອາໄສເນກຂຳມະ

໒. ອຸເປກຂາຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ຮູ້ຄວາມທີ່ ສຽງ ທັງຫຼາຍນັ້ນແລ ຯລຯ

໓. ອຸເປກຂາຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ຮູ້ຄວາມທີ່ ກິ່ນ ທັງຫຼາຍນັ້ນແລ ຯລຯ

໔. ອຸເປກຂາຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ຮູ້ຄວາມທີ່ ຣົດ ທັງຫຼາຍນັ້ນແລ ຯລຯ

໕. ອຸເປກຂາຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ຮູ້ຄວາມທີ່ ໂຜດຖັບພະ ທັງຫຼາຍນັ້ນແລ ຯລຯ

໖. ອຸເປກຂາຍ່ອມເກີດຂຶ້ນແກ່ບຸກຄົນ ຜູ້ຮູ້ຄວາມທີ່ ທຳມາຣົມ ທັງຫຼາຍນັ້ນແລ ບໍ່ທ່ຽງ ເຫັນຄວາມຜັນແປ ຄວາມຄາຍກຳໜັດ ແລະຄວາມດັບນັ້ນຕາມຄວາມເປັນຈິງ ດ້ວຍປັນຍາອັນຖືກຕ້ອງແນວນີ້ວ່າ "ທຳມາຣົມໃນການກ່ອນແລະໃນບັດນີ້ທັງໝົດນັ້ນ ລ້ວນບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ" ອຸເປກຂາແນວນີ້ນັ້ນຍ່ອມລ່ວງພົ້ນທຳມາຣົມໄດ້ ຍ້ອນແນວນັ້ນ ເຮົາຈຶ່ງຮຽກອຸເປກຂານັ້ນວ່າ ອຸເປກຂາອາໄສເນກຂຳມະ

ອຸເປກຂາອາໄສເນກຂຳມະ ໖ ປະການເປັນແນວນີ້

ຄຳທີ່ເຮົາກ່າວໄວ້ວ່າ “ເພິ່ງຮູ້ສັດຕະບົດ ๓๖” ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

[๓๐๙] ເຮົາກ່າວຄຳນີ້ໄວ້ວ່າ “ໃນສັດຕະບົດ ๓๖ ນັ້ນ ທ່ານທັງຫຼາຍອາໄສທຳນີ້ແລ້ວຈຶ່ງລະທຳນີ້ສາ” ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸ ທັງຫຼາຍ ໃນສັດຕະບົດ ๓๖ ນັ້ນ ທ່ານທັງຫຼາຍຈົ່ງອາໄສພຶ່ງພິງໂສມະນັດອັນອາໄສເນກຂຳມະ ๖ ນັ້ນແລ້ວ ຈົ່ງລະ ຈົ່ງກ້າວລ່ວງໂສມະນັດອາໄສເຮືອນ ๖ ນັ້ນສາ ການລະກ້າວລ່ວງໂສມະນັດເຫຼົ່ານັ້ນ ມີໄດ້ດ້ວຍອາການແນວນີ້

ໃນສັດຕະບົດ ๓๖ ນັ້ນ ທ່ານທັງຫຼາຍອາໄສພຶ່ງພິງ ໂທມະນັດ ອັນອາໄສເນກຂຳມະ ๖ ນັ້ນແລ້ວ ຈົ່ງລະ ຈົ່ງກ້າວລ່ວງໂທມະນັດອາໄສເຮືອນ ๖ ນັ້ນສາ ການລະ ການກ້າວລ່ວງໂທມະນັດເຫຼົ່ານັ້ນມີໄດ້ດ້ວຍອາການແນວນີ້

ໃນສັດຕະບົດ ๓๖ ນັ້ນ ທ່ານທັງຫຼາຍ ອາໄສພຶ່ງພິງ ອຸເປກຂາ ອັນອາໄສເນກຂຳມະ ๖ ນັ້ນແລ້ວ ຈົ່ງລະ ຈົ່ງກ້າວລ່ວງອຸເປກຂາອາໄສເຮືອນ ๖ ນັ້ນສາ ການລະ ການກ້າວລ່ວງອຸເປກຂາເຫຼົ່ານັ້ນມີໄດ້ດ້ວຍອາການແນວນີ້

ໃນສັດຕະບົດ ๓๖ ນັ້ນ ທ່ານທັງຫຼາຍ ອາໄສພຶ່ງພິງ ໂສມະນັດ ອັນອາໄສເນກຂຳມະ ๖ ນັ້ນແລ້ວ ຈົ່ງລະ ຈົ່ງກ້າວລ່ວງໂທມະນັດອາໄສເນກຂຳມະ ๖ ນັ້ນສາ ການລະ ການກ້າວລ່ວງໂທມະນັດເຫຼົ່ານັ້ນ ມີໄດ້ດ້ວຍອາການແນວນີ້

ພິກຂຸທັງຫຼາຍ ໃນສັດຕະບົດ ๓๖ ນັ້ນ ທ່ານທັງຫຼາຍ ອາໄສພຶ່ງພິງ ອຸເປກຂາອັນອາໄສເນກຂຳມະ ๖ ນັ້ນແລ້ວ ຈົ່ງລະ ຈົ່ງກ້າວລ່ວງໂສມະນັດອາໄສເນກຂຳມະ ๖ ນັ້ນສາ ການລະການກ້າວລ່ວງໂສມະນັດເຫຼົ່ານັ້ນ ມີໄດ້ດ້ວຍອາການແນວນີ້

[๓๑๐] ພິກຂຸທັງຫຼາຍ ອຸເປກຂາທີ່ມີປະເພດຕ່າງກັນ ອາໄສອາລົມຕ່າງກັນກໍມີ ອຸເປກຂາທີ່ເປັນປະເພດດຽວກັນ ອາໄສອາລົມດຽວກັນກໍມີ

ອຸເປກຂາທີ່ມີປະເພດຕ່າງກັນ ອາໄສອາລົມຕ່າງກັນກໍມີ ເປັນແນວໃດ?

ຄື ອຸເປກຂາໃນຮູບກໍມີ ອຸເປກຂາໃນສຽງກໍມີ ອຸເປກຂາໃນກິ່ນກໍມີ ອຸເປກຂາໃນຣົດກໍມີ ອຸເປກຂາໃນໂຜດຖັບພະກໍມີ

ນີ້ຈັດເປັນອຸເປກຂາທີ່ມີປະເພດຕ່າງກັນ ອາໄສອາລົມຕ່າງກັນ

ອຸເປກຂາທີ່ເປັນປະເພດດຽວກັນ ອາໄສອາລົມດຽວກັນ ເປັນແນວໃດ?

ຄື ອຸເປກຂາທີ່ອາໄສອາກາສານັນຈາຍະຕະນະຊານກໍມີ ອຸເປກຂາທີ່ອາໄສວິນຍານັນຈາຍະຕະນະຊານກໍມີ ອຸເປກຂາທີ່ອາໄສອາກິນຈັນຍາຍະຕະນະຊານກໍມີ ອຸເປກຂາທີ່ອາໄສເນວະສັນຍານາສັນຍາຍະຕະນະຊານກໍມີ

ນີ້ຈັດເປັນອຸເປກຂາທີ່ເປັນປະເພດດຽວກັນ ອາໄສອາລົມດຽວກັນ

ໃນອຸເປກຂາ ໔ ປະການນັ້ນ ທ່ານທັງຫຼາຍອາໄສພຶ່ງພິງ ອຸເປກຂາທີ່ເປັນປະເພດດຽວກັນ ອາໄສອາລົມດຽວກັນແລ້ວ ຈົ່ງລະ ຈົ່ງກ້າວລ່ວງອຸເປກຂາທີ່ມີປະເພດຕ່າງກັນ ອາໄສອາລົມຕ່າງກັນນັ້ນເສຍ ການລະ ການກ້າວລ່ວງອຸເປກຂານີ້ມີໄດ້ດ້ວຍອາການແນວນີ້

ພິກຂຸທັງຫຼາຍ ທ່ານທັງຫຼາຍອາໄສພຶ່ງພິງ ອະຕັມມະຍະຕາ[๑] ແລ້ວ ຈົ່ງລະ ຈົ່ງກ້າວລ່ວງອຸເປກຂາທີ່ເປັນປະເພດດຽວກັນ ອາໄສອາລົມດຽວກັນສາ ການລະ ການກ້າວລ່ວງອຸເປກຂານີ້ມີໄດ້ດ້ວຍອາການແນວນີ້

ຄຳທີ່ເຮົາກ່າວໄວ້ວ່າ ໃນສັດຕະບົດ ໓໖ ນັ້ນ "ທ່ານທັງຫຼາຍ ອາໄສທຳນີ້ແລ້ວ ຈົ່ງລະທຳນີ້ສາ" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

[໓໑໑] ເຮົາກ່າວຄຳນີ້ໄວ້ວ່າ "ເພິ່ງຮູ້ສະຕິປັດຖານ ໓ ທີ່ພຣະອະຣິຍະເສບເຊິ່ງເມື່ອເສບຊື່ວ່າ ເປັນສາດສະດາຄວນເພື່ອສັ່ງສອນຄະນະ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ສາດສະດາໃນໂລກນີ້ ເປັນຜູ້ອະນຸເຄາະ ສະແຫວງຫາປະໂຫຍດເກື້ອກູນອາໄສຄວາມອີດູ ຈຶ່ງສະແດງທຳແກ່ສາວົກທັງຫຼາຍວ່າ "ນີ້ເປັນໄປເພື່ອປະໂຫຍດເກື້ອກູນແກ່ທ່ານທັງຫຼາຍ ນີ້ເປັນໄປເພື່ອສຸກແກ່ທ່ານທັງຫຼາຍ" ສາວົກທັງຫຼາຍຂອງສາດສະດານັ້ນ ຍ່ອມບໍ່ຟັງ ບໍ່ງ່ຽງໂສດສະດັບ ບໍ່ຕັ້ງຈິດຮັບຮູ້ ແລະ ປະພຶດຫຼີກໜີຄຳສອນຂອງສາດສະດາ ໃນຂໍ້ນັ້ນຕະຖາຄົດບໍ່ມີໃຈຍິນດີ ບໍ່ຊົມຊື່ນ ແລະ ບໍ່ຖືກ (ໂທສະ) ຮົ່ວທົດ ມີສະຕິສຳປະຊັນຍະຢູ່

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ສະຕິປັດຖານປະການທີ່ ໑ ທີ່ພຣະອະຣິຍະເສບ ເຊິ່ງເມື່ອເສບ ຊື່ວ່າເປັນສາດສະດາຄວນເພື່ອສັ່ງສອນຄະນະ

ອີກປະການໜຶ່ງ ສາດສະດາເປັນຜູ້ອະນຸເຄາະ ສະແຫວງຫາປະໂຫຍດເກື້ອກູນ ອາໄສຄວາມອີດູຈຶ່ງສະແດງທຳແກ່ສາວົກທັງຫຼາຍວ່າ "ນີ້ເປັນໄປເພື່ອປະໂຫຍດເກື້ອກູນແກ່ທ່ານທັງຫຼາຍ ນີ້ເປັນໄປເພື່ອສຸກແກ່ທ່ານທັງຫຼາຍ ສາວົກທັງຫຼາຍຂອງສາດສະດານັ້ນ ລາງພວກບໍ່ຟັງບໍ່ງ່ຽງໂສດສະດັບ ບໍ່ຕັ້ງຈິດຮັບຮູ້ ແລະ ປະພຶດຫຼີກໜີຄຳສອນຂອງສາດສະດາ ລາງພວກຟັງດ້ວຍດີ ງ່ຽງໂສດສະດັບ ຕັ້ງຈິດຮັບຮູ້ ບໍ່ປະພຶດຫຼີກໜີຄຳສອນຂອງສາດສະດາ ໃນຂໍ້ນັ້ນ ຕະຖາຄົດກໍບໍ່ມີໃຈຍິນດີ ບໍ່ຊົມຊື່ນ ບໍ່ມີໃຈຍິນດີກໍບໍ່ແມ່ນ ບໍ່ຊົມຊື່ນກໍບໍ່ແມ່ນ ເວັ້ນຄວາມມີໃຈຍິນດີແລະ

ຄວາມບໍ່ມີໃຈຍິນດີທັງ ໔ ແບວນັ້ນແລ້ວ ຈຶ່ງເປັນຜູ້ວາງເສີຍ ມີສະຕິສຳປະຊັນຍະຢູ່

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ສະຕິປັດຖານປະການທີ ໔ ທີ່ພຣະອະຣິຍະເສບ ເຊິ່ງເມື່ອເສບ ຊື່ວ່າເປັນສາດສະດາຄວນເພື່ອສັ່ງສອນຄະນະ

ອີກປະການໜຶ່ງ ສາດສະດາເປັນຜູ້ອະນຸເຄາະ ສະແຫວງຫາປະໂຫຍດເກື້ອກູນ ອາໄສຄວາມອີດູຈຶ່ງສະແດງທຳແກ່ສາວົກທັງຫຼາຍວ່າ “ນີ້ເປັນໄປເພື່ອປະໂຫຍດເກື້ອກູນແກ່ທ່ານທັງຫຼາຍ ນີ້ເປັນໄປເພື່ອສຸກແກ່ທ່ານທັງຫຼາຍ ສາວົກທັງຫຼາຍຂອງສາດສະດານັ້ນ ຍ່ອມຟັງດ້ວຍດີ ງ່ຽງໂສດສະດັບ ຕັ້ງຈິດຮັບຮູ້ ບໍ່ປະພຶດຫຼີກໜີຄຳສອນຂອງສາດສະດາ ໃນຂໍ້ນັ້ນ ຕະຖາຄົດມີໃຈຍິນດີ ຊົມຊື່ນ ແລະບໍ່ຖືກ (ຣາຄະ) ຮົ່ວທົດ ມີສະຕິສຳປະຊັນຍະຢູ່

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ສະຕິປັດຖານປະການທີ່ ໓ ທີ່ພຣະອະຣິຍະເສບ ເຊິ່ງເມື່ອເສບ ຊື່ວ່າ ເປັນສາດສະດາຄວນເພື່ອສັ່ງສອນຄະນະ

ຄຳທີ່ເຮົາກ່າວໄວ້ວ່າ “ພຣະອະຣິຍະເສບທຳ ຄື ສະຕິປັດຖານ ໓ ເຊິ່ງ ເມື່ອເສບ ຊື່ວ່າເປັນສາດສະດາຄວນເພື່ອສັ່ງສອນຄະນະ” ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

[໓໑໘] ເຮົາກ່າວຄຳນີ້ໄວ້ວ່າ “ພຣະອີຣະຍະສາດສະດານັ້ນ ອັນເຮົາຮຽກວ່າ ເປັນສາຣະຖີຜູ້ສາມາດເຝິກບຸຣຸດທີ່ຄວນເຝິກໄດ້ຢ່າງປະເສີດກວ່າອາຈານຜູ້ເຝິກທັງຫຼາຍ” ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ຊ້າງທີ່ຄວນເຝິກ ອັນຄວານຊ້າງບັງຄັບໃຫ້ແລ່ນ ຍ່ອມແລ່ນໄປສູ່ທິດດຽວທໍ່ນັ້ນ ຄື ທິດຕາເວັນອອກ ທິດຕາເວັນຕົກ ທິດເໜືອ ຫຼື ທິດໃຕ້

ມ້າທີ່ຄວນເຝິກ ອັນຄົນເຝິກມ້າບັງຄັບໃຫ້ແລ່ນ ຍ່ອມແລ່ນໄປສູ່ທິດດຽວທໍ່ນັ້ນ ຄື ທິດຕາເວັນອອກ ທິດຕາເວັນຕົກ ທິດເໜືອ ຫຼື ທິດໃຕ້

ງົວທີ່ຄວນເຝິກ ອັນຄົນເຝິກງົວບັງຄັບໃຫ້ແລ່ນ ຍ່ອມແລ່ນໄປສູ່ທິດດຽວທໍ່ນັ້ນ ຄືທິດຕາເວັນອອກ ທິດຕາເວັນຕົກ ທິດເໜືອ ຫຼື ທິດໃຕ້

ແຕ່ບຸຣຸດທີ່ຄວນເຝິກ ອັນຕະຖາຄົດອະຣະຫັນຕະ ສຳມາສຳພຸດທະເຈົ້າ ສອນໃຫ້ແລ່ນ ຍ່ອມແລ່ນໄປໄດ້ຕະຫຼອດທິດທັງ ๘ ຄື

ຜູ້ມີຮູບ ຍ່ອມເຫັນຮູບທັງຫຼາຍໄດ້ ນີ້ເປັນທິດທີ ໑
ຜູ້ມີສັນຍາໃນອະຣູປະໃນພາຍໃນ ຍ່ອມເຫັນຮູບທັງຫຼາຍໃນພາຍນອກໄດ້ ນີ້ເປັນທິດທີ ໔

ເປັນຜູ້ນ້ອມໃຈວ່າງາມທັ້ງຫຼາຍ ນີ້ເປັນທິດທີ ໓

ຍ້ອນກ້າວລ່ວງຮູບສັນຍາ ຍ້ອນດັບປະຕິຄະສັນຍາ ຍ້ອນບໍ່ໃສ່ໃຈນານັດຕະສັນຍາໂດຍປະການທັງປວງ ຈຶ່ງບັນລຸອາກາສານັນຈາຍະຕະນະຊານຢູ່ດ້ວຍໃສ່ໃຈວ່າ "ອາກາດຫາບ່ອນສຸດບໍ່ໄດ້" ນີ້ເປັນທິດທີ ໔

ຍ້ອນກ້າວລ່ວງອາກາສານັນຈາຍະຕະນະຊານໄດ້ໂດຍປະການທັງປວງ ຈຶ່ງບັນລຸວິນຍານັນຈາຍະຕະນະຊານຢູ່ດ້ວຍໃສ່ໃຈວ່າ "ວິນຍານຫາບ່ອນສຸດບໍ່ໄດ້" ນີ້ເປັນທິດທີ ໕

ຍ້ອນກ້າວລ່ວງວິນຍານັນຈາຍະຕະນະຊານໄດ້ໂດຍປະການທັງປວງ ຈຶ່ງບັນລຸອາກິນຈັນຍາຍະຕະນະຊານຢູ່ດ້ວຍໃສ່ໃຈວ່າ "ບໍ່ມີອັນໃດຈັກນອຍໜຶ່ງ" ນີ້ເປັນທິດທີ ໖

ຍ້ອນກ້າວລ່ວງອາກິນຈັນຍາຍະຕະນະຊານໄດ້ໂດຍປະການທັງປວງ ຈຶ່ງບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ນີ້ເປັນທິດທີ ໗

ຍ້ອນກ້າວລ່ວງເນວະສັນຍານາສັນຍາຍະຕະນະຊານໄດ້ໂດຍປະການທັງປວງ ຈຶ່ງບັນລຸສັນຍາເວທະຍິຕະນິໂຣດຢູ່ ນີ້ເປັນທິດທີ ໘

ພິກຂຸທັງຫຼາຍ ບຸຣຸດທີ່ຄວນເຝິກອັນຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າສອນໃຫ້ແລ່ນ ຍ່ອມແລ່ນໄປໄດ້ຕະຫຼອດທິດທັງ ໘ ນີ້

ຄຳທີ່ເຮົາກ່າວໄວ້ວ່າ "ພຣະອະຣິຍະສາດສະດານັ້ນອັນເຮົາຮຽກວ່າ ເປັນສາຣະຖີຜູ້ສາມາດເຝິກບຸຣຸດທີ່ຄວນເຝິກໄດ້ຢ່າງປະເສີດກວ່າອາຈານຜູ້ເຝິກທັງຫຼາຍ" ນັ້ນ ຍ້ອນອາໄສເຫດນີ້ເຮົາຈຶ່ງກ່າວໄວ້"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ສະລາຍະຕະນະວິພັງຄະສູດທີ ໗ ຈົບ**

# ໗. ອຸດເທດວິພັງຄະສູດ

## ວ່າດ້ວຍອຸດເທດແລະວິພັງ

[໓໑໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະປິນ ຖິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດໍາຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດວ່າ "ພິກຂຸທັງຫຼາຍ ເຮົາຈັກສະແດງອຸດເທດແລະວິພັງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງອຸດເທດແລະວິພັງນັ້ນ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດໍາຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

"ພິກຂຸທັງຫຼາຍ ພິກຂຸເພິ່ງພິຈາລະນາໂດຍປະການທີ່ເມື່ອພິຈາລະນາຢູ່ ວິນຍານຈະບໍ່ຟຸ້ງໄປ ບໍ່ຊ່ານໄປໃນພາຍນອກ ບໍ່ຕັ້ງໝັ້ນຢູ່ໃນພາຍໃນ ບໍ່ສະດຸ້ງຍ້ອນບໍ່ຍຶດໝັ້ນ ເມື່ອວິນຍານບໍ່ຟຸ້ງໄປ ບໍ່ຊ່ານໄປໃນພາຍນອກ ບໍ່ຕັ້ງໝັ້ນຢູ່ໃນພາຍໃນ ບໍ່ສະດຸ້ງຍ້ອນບໍ່ຖືໝັ້ນ ຈຶ່ງບໍ່ມີເຫດເກີດຫຼືແດນເກີດແຫ່ງຊາດ ຊະຣາ ມໍລະນະ ແລະ ທຸກຕໍ່ໄປ"

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາເມື່ອຕັດພຣະດໍາຣັດນີ້ແລ້ວ ຊົງລຸກຈາກພຸດທະອາດ ສະເດັດເຂົ້າໄປສູ່ທີ່ປະທັບ

[໓໑໔] ຄັ້ງນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປບໍ່ດົນ ພິກຂຸເຫຼົ່ານັ້ນໄດ້ມີຄວາມສົງໄສວ່າ "ທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງອຸດເທດໂດຍຫຍໍ້ນີ້ແກ່ເຮົາທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸເພິ່ງພິຈາລະນາໂດຍປະການທີ່ເມື່ອພິຈາລະນາຢູ່ ວິນຍານຈະບໍ່ຟຸ້ງໄປ ບໍ່ຊ່ານໄປໃນພາຍນອກ ບໍ່ຕັ້ງໝັ້ນຢູ່ໃນພາຍໃນ ບໍ່ສະດຸ້ງຍ້ອນບໍ່ຍຶດໝັ້ນ ເມື່ອວິນຍານບໍ່ຟຸ້ງໄປ ບໍ່ຊ່ານໄປໃນພາຍນອກ ບໍ່ຕັ້ງໝັ້ນຢູ່ໃນພາຍໃນ ບໍ່ສະດຸ້ງຍ້ອນບໍ່ຖືໝັ້ນ ຈຶ່ງບໍ່ມີເຫດເກີດຫຼືແດນເກີດແຫ່ງຊາດ ຊະຣາ ມໍລະນະ ແລະທຸກຕໍ່ໄປ"

ແລ້ວບໍ່ຊົງຊີ້ແຈ່ງເນື້ອຄວາມໃຫ້ພິດສະດານ ຊົງລຸກຈາກພຸດທະອາດສະເດັດເຂົ້າໄປສູ່ທີ່ປະທັບ ໃຜນໍ? ຈະເພິ່ງຊີ້ແຈ່ງເນື້ອຄວາມແຫ່ງອຸດເທດໂດຍຫຍໍ້ ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານໃຫ້ພິດສະດານໄດ້"

ຄັ້ງນັ້ນ ພິກຂຸເຫຼົ່ານັ້ນ ເກີດຄວາມຄິດຂຶ້ນວ່າ "ທ່ານພຣະມະຫາກັດຈານະນີ້ ເປັນຜູ້ທີ່ພຣະສາດສະດາຊົງຍ້ອງຍໍ ທັງເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍສັນເສີນແລ້ວ ແລະທ່ານພຣະມະຫາກັດຈານະກໍສາມາດຈະຊີ້ແຈ່ງເນື້ອຄວາມແຫ່ງອຸດເທດໂດຍຫຍໍ້ ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານໃຫ້ພິດສະດານໄດ້ ທາງທີ່ດີ ເຮົາທັງຫຼາຍຄວນເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ແລ້ວເພິ່ງສອບຖາມເນື້ອຄວາມນີ້ກັບທ່ານພຣະມະຫາກັດຈານະ"

ລຳດັບນັ້ນ ພິກຂຸເຫຼົ່ານັ້ນ ໄດ້ເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນ ແລ້ວນັ່ງຢູ່ບ່ອນສົມຄວນ ໄດ້ກ່າວກັບທ່ານພຣະມະຫາກັດຈານະ ວ່າ

"ທ່ານກັດຈານະ ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດໂດຍຫຍໍ້ນີ້ແກ່ເຮົາທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸເພິ່ງພິຈາລະນາໂດຍປະການທີ່ເມື່ອພິຈາລະນາຢູ່ ວິນຍານຈະບໍ່ຟຸ້ງໄປ ບໍ່ຊ່ານໄປໃນພາຍນອກ ບໍ່ຕັ້ງໝັ້ນຢູ່ໃນພາຍໃນ ບໍ່ສະດຸ້ງຍ້ອນບໍ່ຢຶດໝັ້ນ ເມື່ອວິນຍານບໍ່ຟຸ້ງໄປ ບໍ່ຊ່ານໄປໃນພາຍນອກ ບໍ່ຕັ້ງໝັ້ນຢູ່ໃນພາຍໃນ ບໍ່ສະດຸ້ງຍ້ອນບໍ່ຖືໝັ້ນ ຈຶ່ງບໍ່ມີເຫດເກີດຫຼືແດນເກີດແຫ່ງຊາດ ຊະຣາ ມໍລະນະ ແລະ ທຸກຕໍ່ໄປ" ແລ້ວບໍ່ຊົງຊີ້ແຈ່ງເນື້ອຄວາມໂດຍພິດສະດານ ຊົງລຸກຈາກພຸດທະອາດສະເດັດເຂົ້າໄປສູ່ທີ່ປະທັບ

ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປບໍ່ດົນ ພວກຂ້າພະເຈົ້າໄດ້ມີຄວາມສົງໄສວ່າ "ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດໂດຍຫຍໍ້ນີ້ແກ່ເຮົາທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸເພິ່ງພິຈາລະນາໂດຍປະການທີ່ເມື່ອພິຈາລະນາຢູ່ ວິນຍານຈະບໍ່ຟຸ້ງໄປ ບໍ່ຊ່ານໄປໃນພາຍນອກ ບໍ່ຕັ້ງໝັ້ນຢູ່ໃນພາຍໃນ ບໍ່ສະດຸ້ງຍ້ອນບໍ່ຢຶດໝັ້ນ ເມື່ອວິນຍານບໍ່ຟຸ້ງໄປ ບໍ່ຊ່ານໄປໃນພາຍນອກ ບໍ່ຕັ້ງໝັ້ນຢູ່ໃນພາຍໃນ ບໍ່ສະດຸ້ງຍ້ອນບໍ່ຖືໝັ້ນ ຈຶ່ງບໍ່ມີເຫດເກີດຫຼືແດນເກີດແຫ່ງຊາດ ຊະຣາ ມໍລະນະ ແລະ ທຸກຕໍ່ໄປ" ແລ້ວບໍ່ຊົງຊີ້ແຈ່ງເນື້ອຄວາມໂດຍພິດສະດານ ຊົງລຸກຈາກພຸດທະອາດສະເດັດເຂົ້າໄປສູ່ທີ່ປະທັບ ໃຜນໍຈະເພິ່ງຊີ້ແຈ່ງເນື້ອຄວາມແຫ່ງອຸດເທດໂດຍຫຍໍ້ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານໃຫ້ພິດສະດານໄດ້"

ທ່ານກັດຈານະ ເຮົາທັງຫຼາຍຄິດວ່າ "ທ່ານມະຫາກັດຈານະນີ້ເປັນຜູ້ທີ່ພຣະສາດສະດາຊົງຍ້ອງຍໍ ທັງເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍສັນເສີນແລ້ວ ແລະ ທ່ານມະຫາກັດຈານະກໍສາມາດຈະຊີ້ແຈ່ງເນື້ອຄວາມແຫ່ງອຸດເທດໂດຍຫຍໍ້ ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານໃຫ້ພິດສະດານໄດ້ ທາງທີ່ດີ ເຮົາທັງຫຼາຍຄວນເຂົ້າໄປຫາທ່ານ

ພຣະມະຫາກັດຈານະຮອດບ່ອນຢູ່ ແລ້ວເພິ່ງສອບຖາມເນື້ອຄວາມນີ້ກັບທ່ານພຣະມະຫາກັດຈານະ" ຂໍທ່ານມະຫາກັດຈານະໂຜດຊີ້ແຈ່ງເທີ້ນ"

## ພຣະມະຫາກັດຈານະອະທິບາຍອຸດເທດ

[໓໑໕] ທ່ານພຣະມະຫາກັດຈານະຈຶ່ງຕອບວ່າ "ທ່ານຜູ້ມີອາຍຸທັງຫຼາຍ ປຽບຄື ບຸຣຸດຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ແນມຂ້າມເຫງົ້າແລະລຳຕົ້ນຂອງຕົ້ນໄມ້ໃຫຍ່ເຊິ່ງມີແກ່ນໄປ ເຂົາເຂົ້າໃຈວ່າແກ່ນໄມ້ຕ້ອງສະແຫວງຫາຢູ່ງ່າແລະໃບ ແມ່ນສັນໃດ ຂໍ້ອຸປະໄມນີ້ກໍສັນນັ້ນ ເມື່ອພຣະສາດສະດາຊົງຜາກົດສະເພາະໜ້າທ່ານທັງຫຼາຍ ທ່ານທັງຫຼາຍກໍແນມຂ້າມພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນໄປ ແລະເພິ່ງເຂົ້າໃຈເນື້ອຄວາມນັ້ນວ່າຕ້ອງສອບຖາມກັບຂ້າພະເຈົ້າ ແທ້ຈິງ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງຮູ້ສິ່ງທີ່ຄວນຮູ້ ຊົງເຫັນສິ່ງທີ່ຄວນເຫັນ ເປັນຜູ້ມີພຣະຈັກຂຸ ມີພຣະຍານ ມີທຳ ເປັນພົມ ເປັນຜູ້ເຜີຍແຜ່ ປະກາດ ຂະຫຍາຍເນື້ອຄວາມ ເປັນຜູ້ໃຫ້ອະມະຕະທຳ ເປັນເຈົ້າຂອງທຳ ເປັນພຣະຕະຖາຄົດ ແລະ ເວລານີ້ກໍເປັນເວລາອັນສົມຄວນທີ່ທ່ານທັງຫຼາຍ ຈະທູນຖາມເນື້ອຄວາມນີ້ກັບພຣະອົງ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍຊົງຕອບແນວໃດ ທ່ານທັງຫຼາຍ ເພິ່ງຊົງຈຳເນື້ອຄວາມນັ້ນໄວ້ແນວນັ້ນເທີ້ນ"

ພິກຂຸເຫຼົ່ານັ້ນ ໄດ້ກ່າວຕອບວ່າ "ທ່ານກັດຈານະ ເປັນຄວາມຈິງທີ່ພຣະຜູ້ມີພຣະພາກເຈົ້າຊົງຮູ້ສິ່ງທີ່ຄວນຮູ້ ຊົງເຫັນສິ່ງທີ່ຄວນເຫັນ ເປັນຜູ້ມີພຣະຈັກຂຸ ມີພຣະຍານ ມີທຳ ເປັນພົມ ເປັນຜູ້ເຜີຍແຜ່ ປະກາດ ຂະຫຍາຍເນື້ອຄວາມ ເປັນຜູ້ໃຫ້ອະມະຕະທຳ ເປັນເຈົ້າຂອງທຳ ເປັນພຣະຕະຖາຄົດ ແລະ ເວລານີ້ ກໍເປັນເວລາອັນສົມຄວນທີ່ເຮົາທັງຫຼາຍຈະທູນຖາມເນື້ອຄວາມນີ້ກັບພຣະອົງ ເມື່ອພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍຊົງຕອບແນວໃດ ເຮົາທັງຫຼາຍຈະເພິ່ງຊົງຈຳເນື້ອຄວາມນັ້ນໄວ້ແນວນັ້ນ ແຕ່ວ່າ ທ່ານມະຫາກັດຈານະເປັນຜູ້ທີ່ພຣະສາດສະດາຊົງຍ້ອງຍໍທັງເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍສັນເສີນແລ້ວ ແລະ ທ່ານມະຫາກັດຈານະກໍສາມາດຈະຊີ້ແຈ່ງເນື້ອຄວາມແຫ່ງອຸດເທດໂດຍຫຍໍ້ ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານໃຫ້ພິດສະດານໄດ້ ຂໍທ່ານມະຫາກັດຈານະບໍ່ຕ້ອງໜັກໃຈ ຊີ້ແຈ່ງເທີ້ນ"

ທ່ານພຣະມະຫາກັດຈານະກ່າວວ່າ "ທ່ານຜູ້ມີອາຍຸທັງຫຼາຍ ຖ້າເຊັ່ນນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ຂ້າພະເຈົ້າຈັກກ່າວ" ເມື່ອ ພິກຂຸເຫຼົ່ານັ້ນ ຮັບຄຳແລ້ວ

ທ່ານພຣະມະຫາກັດຈານະຈຶ່ງໄດ້ກ່າວວ່າ "ທ່ານຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດໂດຍຫຍໍ້ໄວ້ວ່າ "ພິກຂຸທັງຫຼາຍ ພິກຂຸເພິ່ງພິຈາລະນາໂດຍປະການທີ່ເມື່ອພິຈາລະນາຢູ່ ວິນຍານຈະບໍ່ຟຸ້ງໄປ ບໍ່ຊ່ານໄປໃນພາຍນອກ ບໍ່ຕັ້ງໝັ້ນຢູ່ໃນພາຍໃນ ບໍ່ສະດຸ້ງຍ້ອນບໍ່ຢຶດໝັ້ນ ເມື່ອວິນຍານບໍ່ຟຸ້ງໄປ ບໍ່ຊ່ານໄປໃນພາຍນອກ ບໍ່ຕັ້ງໝັ້ນຢູ່ໃນພາຍໃນ ບໍ່ສະດຸ້ງຍ້ອນບໍ່ຖືໝັ້ນ ຈຶ່ງບໍ່ມີເຫດເກີດ ຫຼື ແດນເກີດແຫ່ງຊາດ ຊະຣາ ມໍລະນະ ແລະ ທຸກຕໍ່ໄປ" ແລ້ວບໍ່ຊົງຊີ້ແຈ່ງເນື້ອຄວາມໂດຍພິດສະດານ ຊົງລຸກຈາກອາສະນະສະເດັດເຂົ້າໄປສູ່ທີ່ປະທັບ ຂ້າພະເຈົ້າຮູ້ທົ່ວເຖິງ ເນື້ອຄວາມແຫ່ງອຸດເທດໂດຍຫຍໍ້ ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ ບໍ່ຊົງຊີ້

ແຈ່ງໄວ້ໂດຍພິດສະດານ ໂດຍພິດສະດານແນວນີ້

[໓໑໖] ວິນຍານທີ່ຮຽກວ່າ "ຟຸ້ງໄປ ຊ່ານໄປໃນພາຍນອກ" ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ ເຫັນຮູບທາງຕາແລ້ວ ມີວິນຍານຊ່ານໄປຕາມນິມິດຄືຮູບ ພຣະຜູ້ມີພຣະພາກເຈົ້າ ຕັດຮຽກວິນຍານທີ່ຖືກຄວາມຍິນດີໃນນິມິດຄືຮູບຕຶງໄວ້ ຖືກຄວາມຍິນດີໃນນິມິດຄືຮູບຜູກມັດໄວ້ ທີ່ກ່ຽວຂ້ອງດ້ວຍສັງໂຍດຄືຄວາມຍິນດີໃນນິມິດຄື ຮູບ ວ່າ "ຟຸ້ງໄປ ຊ່ານໄປໃນພາຍນອກ"

ຟັງສຽງທາງຫູແລ້ວ ຯລຯ
ດົມກິ່ນທາງດັງແລ້ວ ຯລຯ
ຊີມຣົດທາງລີ້ນແລ້ວ ຯລຯ
ຖືກຕ້ອງໂຜດຖັບພະທາງກາຍແລ້ວ ຯລຯ

ຮູ້ທຳມາຣົມທາງໃຈແລ້ວ ມີວິນຍານຊ່ານໄປຕາມນິມິດຄືທຳມາຣົມ ພຣະຜູ້ມີພຣະພາກເຈົ້າຕັດຮຽກວິນຍານທີ່ຖືກຄວາມຍິນດີໃນນິມິດ ຄື ທຳມາຣົມຕຶງໄວ້ ທີ່ຖືກຄວາມຍິນດີໃນນິມິດຄືທຳມາຣົມຜູກມັດໄວ້ ທີ່ກ່ຽວຂ້ອງດ້ວຍສັງໂຍດ ຄື ຄວາມຍິນດີໃນນິມິດຄືທຳມາຣົມວ່າ "ຟຸ້ງໄປ ຊ່ານໄປໃນພາຍນອກ"

ວິນຍານທີ່ຮຽກວ່າ "ຟຸ້ງໄປ ຊ່ານໄປໃນພາຍນອກ" ເປັນແນວນີ້

[໓໑໗] ວິນຍານທີ່ຮຽກວ່າ "ບໍ່ຟຸ້ງໄປ ບໍ່ຊ່ານໄປໃນພາຍນອກ" ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ ເຫັນຮູບທາງຕາແລ້ວ ມີວິນຍານບໍ່ຊ່ານໄປຕາມນິມິດຄືຮູບ ພຣະຜູ້ມີພຣະພາກເຈົ້າ ຕັດຮຽກວິນຍານທີ່ບໍ່ຖືກຄວາມຍິນດີໃນນິມິດຄືຮູບຕຶງໄວ້ ທີ່ບໍ່ຖືກຄວາມຍິນດີໃນນິມິດຄືຮູບຜູກມັດໄວ້ ບໍ່ກ່ຽວຂ້ອງດ້ວຍສັງໂຍດຄືຄວາມຍິນດີໃນນິມິດຄືຮູບວ່າ "ບໍ່ຟຸ້ງໄປ ບໍ່ຊ່ານໄປໃນພາຍນອກ"

ຟັງສຽງທາງຫູແລ້ວ ຯລຯ
ດົມກິ່ນທາງດັງແລ້ວ ຯລຯ
ຊີມຣົດທາງລີ້ນແລ້ວ ຯລຯ
ຖືກຕ້ອງໂຜດຖັບພະທາງກາຍແລ້ວ ຯລຯ

ຮູ້ທຳມາຣົມທາງໃຈແລ້ວ ມີວິນຍານບໍ່ຊ່ານໄປຕາມນິມິດຄືທຳມາຣົມ ພຣະຜູ້ມີພຣະພາກເຈົ້າຕັດຮຽກວິນຍານທີ່ບໍ່ຖືກຄວາມຍິນດີໃນນິມິດຄືທຳມາຣົມຕຶງໄວ້ ທີ່ບໍ່ຖືກຄວາມຍິນດີໃນນິມິດ

ຄືທຳມາຣົມຜູກມັດໄວ້ ທີ່ບໍ່ກ່ຽວຂ້ອງດ້ວຍສັງໂຍດຄືຄວາມຍິນດີໃນນິມິດຄືທຳມາຣົມວ່າ "ບໍ່ຟຸ້ງໄປ ບໍ່ຊ່ານໄປໃນພາຍນອກ"

ວິນຍານທີ່ຮຽກວ່າ "ບໍ່ຟຸ້ງໄປ ບໍ່ຊ່ານໄປໃນພາຍນອກ" ເປັນແນວນີ້

[໓໑໗] ຈິດທີ່ຮຽກວ່າ "ຕັ້ງໝັ້ນຢູ່ໃນພາຍໃນ" ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ ສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ ພິກຂຸນັ້ນມີວິນຍານຊ່ານໄປຕາມປີຕິແລະສຸກອັນເກີດຈາກວິເວກ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກຈິດທີ່ຖືກຄວາມຍິນດີໃນປີຕິແລະສຸກອັນເກີດຈາກວິເວກຕຶງໄວ້ ທີ່ຖືກຄວາມຍິນດີໃນປີຕິແລະສຸກອັນເກີດຈາກວິເວກຜູກມັດໄວ້ ທີ່ກ່ຽວຂ້ອງດ້ວຍສັງໂຍດຄືຄວາມຍິນດີໃນປີຕິ ແລະ ສຸກອັນເກີດຈາກວິເວກວ່າ "ຕັ້ງໝັ້ນຢູ່ໃນພາຍໃນ"

ອີກປະການໜຶ່ງ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່ ພິກຂຸນັ້ນມີວິນຍານຊ່ານໄປຕາມປີຕິ ແລະ ສຸກອັນເກີດຈາກສະມາທິ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດຮຽກຈິດທີ່ຖືກຄວາມຍິນດີໃນປີຕິ ແລະ ສຸກອັນເກີດຈາກສະມາທິຕຶງໄວ້ ທີ່ຖືກຄວາມຍິນດີໃນປີຕິ ແລະ ສຸກອັນເກີດຈາກສະມາທິຜູກມັດໄວ້ ທີ່ກ່ຽວຂ້ອງດ້ວຍສັງໂຍດຄືຄວາມຍິນດີໃນປີຕິ ແລະ ສຸກອັນເກີດຈາກສະມາທິວ່າ "ຕັ້ງໝັ້ນຢູ່ໃນພາຍໃນ"

ອີກປະການໜຶ່ງ ຍ້ອນປີຕິຈາງຄາຍອອກ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິຢູ່ເປັນສຸກ" ພິກຂຸນັ້ນ ມີວິນຍານຊ່ານໄປຕາມອຸເປກຂາ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກຈິດທີ່ຖືກຄວາມຍິນດີໃນສຸກອັນເກີດຈາກອຸເປກຂາຕຶງໄວ້ ທີ່ຖືກຄວາມຍິນດີໃນສຸກອັນເກີດຈາກອຸເປກຂາຜູກມັດໄວ້ ທີ່ກ່ຽວຂ້ອງດ້ວຍສັງໂຍດຄືຄວາມຍິນດີໃນສຸກອັນເກີດຈາກອຸເປກຂາວ່າ "ຕັ້ງໝັ້ນຢູ່ໃນພາຍໃນ"

ອີກປະການໜຶ່ງ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນ ພິກຂຸບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ພິກຂຸນັ້ນ ມີວິນຍານຊ່ານໄປໃນອະທຸກຂະມະສຸຂະ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກຈິດທີ່ຖືກຄວາມຍິນດີໃນອະທຸກຂະມະສຸຂະຕຶງໄວ້ ທີ່ຖືກຄວາມຍິນດີໃນອະທຸກຂະມະສຸຂະຜູກມັດໄວ້ ທີ່ກ່ຽວຂ້ອງດ້ວຍສັງໂຍດຄືຄວາມຍິນດີໃນອະທຸກຂະມະສຸຂະວ່າ "ຕັ້ງໝັ້ນຢູ່ໃນພາຍໃນ"

ຈິດທີ່ຮຽກວ່າ "ຕັ້ງໝັ້ນຢູ່ໃນພາຍໃນ" ເປັນແນວນີ້

[໓໗໙] ຈິດທີ່ຮຽກວ່າ "ບໍ່ຕັ້ງໝັ້ນຢູ່ໃນພາຍໃນ" ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ ສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານ ຯລຯ ຢູ່ ພິກຂຸນັ້ນ ມີວິນຍານບໍ່ຊ່ານໄປຕາມປີຕິແລະສຸກອັນເກີດຈາກວິເວກ ພຣະຜູ້ມີພຣະພາກເຈົ້າຕັດຮຽກຈິດທີ່ບໍ່ຖືກຄວາມຍິນດີໃນປີຕິ ແລະ ສຸກອັນເກີດຈາກວິເວກຕຶງໄວ້ ທີ່ບໍ່ຖືກຄວາມຍິນດີໃນປີຕິແລະສຸກອັນເກີດຈາກວິເວກຜູກມັດໄວ້ ທີ່ບໍ່ກ່ຽວຂ້ອງດ້ວຍສັງໂຍດຄືຄວາມຍິນດີໃນປີຕິແລະສຸກອັນເກີດຈາກວິເວກວ່າ "ບໍ່ຕັ້ງໝັ້ນຢູ່ໃນພາຍໃນ"

ອີກປະການໜຶ່ງ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານ ຯລຯ ຢູ່ ພິກຂຸນັ້ນ ມີວິນຍານບໍ່ຊ່ານໄປຕາມປີຕິ ແລະ ສຸກອັນເກີດຈາກສະມາທິ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກຈິດທີ່ບໍ່ຖືກຄວາມຍິນດີໃນປີຕິ ແລະ ສຸກອັນເກີດຈາກສະມາທິຕຶງໄວ້ ທີ່ບໍ່ຖືກຄວາມຍິນດີໃນປີຕິແລະສຸກອັນເກີດຈາກສະມາທິຜູກມັດໄວ້ ທີ່ບໍ່ກ່ຽວຂ້ອງດ້ວຍສັງໂຍດຄືຄວາມຍິນດີໃນປີຕິແລະສຸກອັນເກີດຈາກສະມາທິວ່າ "ບໍ່ຕັ້ງໝັ້ນຢູ່ໃນພາຍໃນ"

ອີກປະການໜຶ່ງ ຍ້ອນປີຕິຈາງຄາຍອອກ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານ ຯລຯ ຢູ່ ພິກຂຸນັ້ນ ມີວິນຍານບໍ່ຊ່ານໄປຕາມອຸເປກຂາ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດຮຽກຈິດທີ່ບໍ່ຖືກຄວາມຍິນດີໃນສຸກອັນເກີດຈາກອຸເປກຂາຕຶງໄວ້ ທີ່ບໍ່ຖືກຄວາມຍິນດີໃນສຸກອັນເກີດຈາກອຸເປກຂາຜູກມັດໄວ້ ທີ່ບໍ່ກ່ຽວຂ້ອງດ້ວຍສັງໂຍດຄືຄວາມຍິນດີໃນສຸກອັນເກີດຈາກອຸເປກຂາວ່າ "ບໍ່ຕັ້ງໝັ້ນຢູ່ໃນພາຍໃນ"

ອີກປະການໜຶ່ງ ຍ້ອນລະສຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນ ພິກຂຸບັນລຸຈະຕຸດຖະຊານ ຯລຯ ຢູ່ ພິກຂຸນັ້ນ ມີວິນຍານບໍ່ຊ່ານໄປຕາມອະທຸກຂະມະສຸຂະ ພຣະຜູ້ມີພຣະພາກເຈົ້າຕັດຮຽກຈິດທີ່ບໍ່ຖືກຄວາມຍິນດີໃນອະທຸກຂະມະສຸຂະຕຶງໄວ້ ທີ່ບໍ່ຖືກຄວາມຍິນດີໃນອະທຸກຂະມະສຸຂະຜູກມັດໄວ້ ທີ່ບໍ່ກ່ຽວຂ້ອງດ້ວຍສັງໂຍດ ຄື ຄວາມຍິນດີໃນອະທຸກຂະມະສຸຂະວ່າ "ບໍ່ຕັ້ງໝັ້ນຢູ່ໃນພາຍໃນ"

ຈິດທີ່ຮຽກວ່າ "ບໍ່ຕັ້ງໝັ້ນຢູ່ໃນພາຍໃນ" ເປັນແນວນີ້

[໓໘໐] ຄວາມສະດຸ້ງຍ້ອນຕາມຍຶດໝັ້ນ ເປັນແນວໃດ?

ຄື ປຸຖຸຊົນໃນໂລກນີ້ ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາແດ່ ພິຈາລະນາເຫັນອັດຕາວ່າມີຮູບແດ່ ພິຈາລະນາເຫັນຮູບໃນອັດຕາແດ່ ພິຈາລະ

ນາເຫັນອັດຕາໃນຮູບແດ່ ຮູບນັ້ນຂອງເຂົາຍ່ອມຜັນແປເປັນແນວອື່ນໄດ້ ຍ້ອນຄວາມທີ່ຮູບຜັນແປເປັນແນວອື່ນ ເຂົາຈຶ່ງມີວິນຍານຄວນຕາມຄວາມຜັນແປຂອງຮູບ ຄວາມສະດຸ້ງແລະຄວາມເກີດຂຶ້ນແຫ່ງທຳ ອັນເກີດຈາກການຄວນຕາມຄວາມຜັນແປຂອງຮູບ ຍ່ອມຄອບງຳຈິດຂອງເຂົາຕັ້ງຢູ່ ຍ້ອນຈິດຖືກຄອບງຳ ເຂົາຈຶ່ງເປັນຜູ້ມີຄວາມຫວາດຫວັ່ນ ຄັບແຄ້ນ ຫ່ວງໃຍ ແລະ ຍ້ອນຕາມຢຶດໝັ້ນ ເຂົາຈຶ່ງສະດຸ້ງ

ພິຈາລະນາເຫັນເວທະນາ ຯລຯ

ພິຈາລະນາເຫັນສັນຍາ ຯລຯ

ພິຈາລະນາເຫັນສັງຂານ ຯລຯ

ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາແດ່ ພິຈາລະນາເຫັນອັດຕາວ່າມີວິນຍານແດ່ ພິຈາລະນາເຫັນວິນຍານໃນອັດຕາແດ່ ພິຈາລະນາເຫັນອັດຕາໃນວິນຍານແດ່ ວິນຍານນັ້ນຂອງເຂົາຍ່ອມຜັນແປເປັນແນວອື່ນໄດ້ ຍ້ອນຄວາມທີ່ວິນຍານຜັນແປເປັນແນວອື່ນ ເຂົາຈຶ່ງມີວິນຍານຄວນຕາມຄວາມຜັນແປຂອງວິນຍານ ຄວາມສະດຸ້ງ ແລະ ຄວາມເກີດຂຶ້ນແຫ່ງທຳອັນເກີດຈາກການຄວນຕາມຄວາມຜັນແປຂອງວິນຍານ ຍ່ອມຄອບງຳຈິດຂອງເຂົາຕັ້ງຢູ່ ຍ້ອນຈິດຖືກຄອບງຳ ເຂົາຈຶ່ງເປັນຜູ້ມີຄວາມຫວາດຫວັ່ນ ຄັບແຄ້ນ ຫ່ວງໃຍ ແລະຍ້ອນຕາມຢຶດໝັ້ນ ເຂົາຈຶ່ງສະດຸ້ງ

ຄວາມສະດຸ້ງຍ້ອນຕາມຢຶດໝັ້ນ ເປັນແນວນີ້

[໓໔໑] ຄວາມບໍ່ສະດຸ້ງຍ້ອນບໍ່ຢຶດໝັ້ນ ເປັນແນວໃດ?

ຄື ພຣະອະຣິຍະສາວົກໃນພຣະທຳວິໄນນີ້ ຜູ້ໄດ້ສະດັບ ໄດ້ເຫັນພຣະອະຣິຍະ ສະຫຼາດໃນທຳຂອງພຣະອະຣິຍະ ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ໄດ້ເຫັນສັດຕະບຸຣຸດ ສະຫຼາດໃນທຳຂອງສັດຕະບຸຣຸດ ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ບໍ່ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາແດ່ ບໍ່ພິຈາລະນາເຫັນອັດຕາວ່າມີຮູບແດ່ ບໍ່ພິຈາລະນາເຫັນຮູບໃນອັດຕາແດ່ ບໍ່ພິຈາລະນາເຫັນອັດຕາໃນຮູບແດ່ ຮູບນັ້ນຂອງທ່ານຍ່ອມຜັນແປເປັນແນວອື່ນໄດ້ ຍ້ອນຄວາມທີ່ຮູບຜັນແປເປັນແນວອື່ນ ທ່ານຈຶ່ງບໍ່ມີວິນຍານຄວນຕາມຄວາມຜັນແປຂອງຮູບ ຄວາມສະດຸ້ງ ແລະ ຄວາມເກີດຂຶ້ນແຫ່ງທຳອັນເກີດຈາກການຄວນຕາມຄວາມຜັນແປຂອງຮູບ ຍ່ອມບໍ່ຄອບງຳຈິດທ່ານຕັ້ງຢູ່ ຍ້ອນຈິດບໍ່ຖືກຄອບງຳ ທ່ານຈຶ່ງເປັນຜູ້ບໍ່ມີຄວາມຫວາດຫວັ່ນ ບໍ່ຄັບແຄ້ນ ບໍ່ຫ່ວງໃຍ ແລະ ຍ້ອນບໍ່ຢຶດໝັ້ນ ທ່ານຈຶ່ງບໍ່ສະດຸ້ງ

ບໍ່ພິຈາລະນາເຫັນເວທະນາ ຯລຯ

ບໍ່ພິຈາລະນາເຫັນສັນຍາ ຯລຯ

ບໍ່ພິຈາລະນາເຫັນສັງຂານ ຯລຯ

ບໍ່ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາແດ່ ບໍ່ພິຈາລະນາເຫັນອັດຕາວ່າມີວິນຍານແດ່ ບໍ່ພິຈາລະນາເຫັນວິນຍານໃນອັດຕາແດ່ ບໍ່ພິຈາລະນາເຫັນອັດຕາໃນວິນຍານແດ່ ວິນຍານນັ້ນຂອງທ່ານຍ່ອມຜັນແປເປັນແນວອື່ນໄດ້ ຍ້ອນຄວາມທີ່ວິນຍານຜັນແປເປັນແນວອື່ນ ທ່ານຈຶ່ງບໍ່ມີວິນຍານຄວນຕາມຄວາມຜັນແປຂອງວິນຍານ ຄວາມສະດຸ້ງແລະຄວາມເກີດຂຶ້ນແຫ່ງທຳອັນເກີດຈາກການຄວນຕາມຄວາມຜັນແປຂອງວິນຍານ ຍ່ອມບໍ່ຄອບງຳຈິດຂອງທ່ານຕັ້ງຢູ່ ຍ້ອນຈິດບໍ່ຖືກຄອບງຳ ທ່ານຈຶ່ງເປັນຜູ້ບໍ່ມີຄວາມຫວາດຫວັ່ນ ບໍ່ຄັບແຄ້ນ ບໍ່ຫ່ວງໃຍ ແລະຍ້ອນຄວາມບໍ່ຍຶດໝັ້ນ ທ່ານຈຶ່ງບໍ່ສະດຸ້ງ ຄວາມບໍ່ສະດຸ້ງຍ້ອນບໍ່ຍຶດໝັ້ນ ເປັນແນວນີ້ແລ

ທ່ານຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດໂດຍຫຍໍ້ໄວ້ວ່າ "ພິກຂຸເພິ່ງ ພິຈາລະນາໂດຍປະການທີ່ເມື່ອພິຈາລະນາຢູ່ ວິນຍານຈະບໍ່ຟຸ້ງໄປ ບໍ່ຊ່ານໄປໃນພາຍນອກ ບໍ່ຕັ້ງໝັ້ນຢູ່ໃນພາຍໃນ ບໍ່ສະດຸ້ງຍ້ອນບໍ່ຍຶດໝັ້ນ ເມື່ອວິນຍານບໍ່ຟຸ້ງໄປ ບໍ່ຊ່ານໄປໃນພາຍນອກ ບໍ່ຕັ້ງໝັ້ນຢູ່ໃນພາຍໃນ ບໍ່ສະດຸ້ງຍ້ອນບໍ່ຍຶດໝັ້ນ ຈຶ່ງບໍ່ມີເຫດເກີດ ຫຼື ແດນເກີດແຫ່ງຊາດ ຊະຣາ ມໍລະນະ ແລະ ທຸກຕໍ່ໄປ" ແລ້ວບໍ່ຊົງຊີ້ແຈ່ງເນື້ອຄວາມໂດຍພິດສະດານ ຊົງລຸກຈາກພຸດທະອາດສະເດັດເຂົ້າໄປສູ່ທີ່ປະທັບ ຂ້າພະເຈົ້າຮູ້ທົ່ວເຖິງເນື້ອຄວາມແຫ່ງອຸດເທດໂດຍຫຍໍ້ ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານ ໂດຍພິດສະດານແນວນີ້ ແຕ່ທ່ານທັງຫຼາຍເມື່ອຫວັງ ເພິ່ງເຂົ້າໄປເຝົ້າແລ້ວສອບຖາມເນື້ອຄວາມນັ້ນເທີ້ນ ພຣະຜູ້ມີພຣະພາກຂອງເຮົາທັງຫຼາຍຊົງຕອບແນວໃດ ທ່ານທັງຫຼາຍເພິ່ງຊົງຈຳເນື້ອຄວາມນັ້ນໄວ້ແນວນັ້ນເທີ້ນ"

[๓໔໔] ຄັ້ງນັ້ນ ພິກຂຸເຫຼົ່ານັ້ນມີໃຈຍິນດີຕ່າງຊົມຊື່ນພາສິດຂອງທ່ານພຣະມະຫາກັດຈານະ ແລ້ວລຸກຂຶ້ນຈາກອາສະນະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງອຸດເທດໂດຍຫຍໍ້ແກ່ຂ້າພຣະອົງທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸເພິ່ງພິຈາລະນາໂດຍປະການທີ່ເມື່ອພິຈາລະນາຢູ່ ວິນຍານຈະບໍ່ຟຸ້ງໄປ ບໍ່ຊ່ານໄປໃນພາຍນອກ ບໍ່ຕັ້ງໝັ້ນຢູ່ໃນພາຍໃນ ບໍ່ສະດຸ້ງຍ້ອນບໍ່ຍຶດໝັ້ນ ເມື່ອວິນຍານບໍ່ຟຸ້ງໄປ ບໍ່ຊ່ານໄປໃນພາຍນອກ ບໍ່ຕັ້ງໝັ້ນຢູ່ໃນພາຍໃນ ບໍ່ສະດຸ້ງຍ້ອນບໍ່ຍຶດໝັ້ນ ຈຶ່ງບໍ່ມີເຫດເກີດຫຼືແດນເກີດແຫ່ງຊາດ ຊະຣາ ມໍລະນະ ແລະທຸກຕໍ່ໄປ" ແລ້ວບໍ່ຊົງຊີ້ແຈ່ງເນື້ອຄວາມໂດຍພິດສະດານ ຊົງລຸກຈາກພຸດທະອາດສະເດັດເຂົ້າໄປສູ່ທີ່ປະທັບ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປບໍ່ດົນ ຂ້າພຣະອົງທັງຫຼາຍນັ້ນໄດ້ມີຄວາມສົງໄສວ່າ "ທ່ານຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດໂດຍຫຍໍ້ນີ້ແກ່ເຮົາທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸເພິ່ງພິຈາລະນາໂດຍປະການທີ່ ເມື່ອພິຈາລະນາຢູ່ ວິນຍານຈະບໍ່ຟຸ້ງໄປ ບໍ່ຊ່ານໄປໃນພາຍນອກ ບໍ່ຕັ້ງໝັ້ນຢູ່ໃນພາຍໃນ ບໍ່ສະດຸ້ງ

ຍ້ອນບໍ່ຍຶດໝັ້ນ ເມື່ອວິນຍານບໍ່ຟຸ້ງໄປ ບໍ່ຊ່ານໄປໃນພາຍນອກ ບໍ່ຕັ້ງໝັ້ນຢູ່ໃນພາຍໃນ ບໍ່ສະດຸ້ງ ຍ້ອນບໍ່ຍຶດໝັ້ນ ຈຶ່ງບໍ່ມີເຫດເກີດຫຼືແດນເກີດແຫ່ງຊາດ ຊະຣາ ມໍລະນະ ແລະ ທຸກຕໍ່ໄປ" ແລ້ວບໍ່ຊົງຊີ້ແຈ່ງເນື້ອຄວາມໃຫ້ພິດສະດານ ຊົງລຸກຈາກພຸດທະອາດ ສະເດັດເຂົ້າໄປສູ່ທີ່ປະທັບ ໃຜນໍ? ຈະເພິ່ງຊີ້ແຈ່ງເນື້ອຄວາມແຫ່ງອຸດເທດ ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານໃຫ້ພິດສະດານໄດ້"

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍນັ້ນເກີດຄວາມຄິດຂຶ້ນວ່າ "ທ່ານພຣະມະຫາກັດຈານະນີ້ ເປັນຜູ້ທີ່ພຣະສາດສະດາຊົງຍ້ອງຍໍ ທັງເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍສັນເສີນແລ້ວ ແລະ ທ່ານພຣະມະຫາກັດຈານະກໍສາມາດຈະຊີ້ແຈ່ງເນື້ອຄວາມແຫ່ງອຸດເທດໂດຍຫຍໍ້ ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານ ໂດຍພິດສະດານໄດ້ ທາງທີ່ດີ ເຮົາທັງຫຼາຍຄວນເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ແລ້ວເພິ່ງສອບຖາມເນື້ອຄວາມນີ້ກັບທ່ານພຣະມະຫາກັດຈານະ"

ລຳດັບນັ້ນ ຂ້າພຣະອົງທັງຫຼາຍ ເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ແລ້ວສອບຖາມເນື້ອຄວາມນີ້ກັບທ່ານພຣະມະຫາກັດຈານະ ທ່ານພຣະມະຫາກັດຈານະໄດ້ຊີ້ແຈ່ງເນື້ອຄວາມແກ່ຂ້າພຣະອົງທັງຫຼາຍແລ້ວໂດຍອາການເຫຼົ່ານີ້ ໂດຍບົດເຫຼົ່ານີ້ ໂດຍພະຍັນຊະນະເຫຼົ່ານີ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ມະຫາກັດຈານະ ເປັນບັນດິດ ມີປັນຍາຫຼາຍ ແມ່ນຖ້າທ່ານທັງຫຼາຍເພິ່ງສອບຖາມເນື້ອຄວາມນັ້ນກັບເຮົາ ເຖິງເຮົາກໍເພິ່ງຕອບແນວດຽວກັບທີ່ມະຫາກັດຈານະຕອບແລ້ວຄືກັນ ກໍເນື້ອຄວາມແຫ່ງອຸດເທດນັ້ນເປັນແນວນີ້ ທ່ານທັງຫຼາຍເພິ່ງຊົງຈຳເນື້ອຄວາມນັ້ນໄວ້ແນວນັ້ນເທີ້ນ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ອຸດເທດວິພັງຄະສູດທີ ໙ ຈົບ**

# ๙. ອະຣະນະວິພັງຄະສູດ

## ວ່າດ້ວຍການຈຳແນກທຳທີ່ບໍ່ມີກິເລດ

[๓๘๓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ພິກຂຸທັງຫຼາຍ ເຮົາຈັກສະແດງອະຣະນະວິພັງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງອະຣະນະວິພັງນັ້ນ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

"ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງປະກອບເລື້ອຍ ໆ ເຊິ່ງສຸກໃນກາມ ອັນຊາມ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ແລະ ບໍ່ເພິ່ງປະກອບເລື້ອຍ ໆ ເຊິ່ງອັດຕະກິລະມະຖານຸໂຍກ (ການປະກອບຄວາມລຳບາກເດືອດຮ້ອນແກ່ຕົນ) ອັນເປັນທຸກ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ

ພິກຂຸທັງຫຼາຍ ມັດຊິມາປະຕິປະທາບໍ່ອຽງເຂົ້າໃກ້ທີ່ສຸດ ๒ ແນວນັ້ນທີ່ຕະຖາຄົດໄດ້ຕັດສະຣູ້ແລ້ວ ອັນເປັນປະຕິປະທາກໍ່ໃຫ້ເກີດຈັກຂຸ ກໍ່ໃຫ້ເກີດຍານ ເປັນໄປເພື່ອຄວາມສະງົບ ເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ ເພື່ອນິບພານ ເພິ່ງຮູ້ຈັກການຍົກຍ້ອງແລະການຕຳໜິ ເມື່ອຮູ້ແລ້ວ ບໍ່ເພິ່ງຍ້ອງຍໍ ບໍ່ເພິ່ງຕຳໜິ ເພິ່ງສະແດງທຳທີ່ນັ້ນ ເພິ່ງຮູ້ການຕັດສິນຄວາມສຸກ ເມື່ອຮູ້ແລ້ວ ເພິ່ງປະກອບເລື້ອຍ ໆ ເຊິ່ງຄວາມສຸກໃນພາຍໃນ ບໍ່ເພິ່ງກ່າວຄວາມລັບ ບໍ່ເພິ່ງກ່າວຄຳລ່ວງເກີນຕໍ່ໜ້າ ເມື່ອບໍ່ຟ້າວຈຶ່ງເວົ້າ ເມື່ອຟ້າວບໍ່ຄວນເວົ້າ ບໍ່ເພິ່ງຢຶດພາສາທ້ອງຖິ່ນ ບໍ່ເພິ່ງແນມຂ້າມຄຳເວົ້າສາມັນ໌ ນີ້ເປັນອຸດເທດແຫ່ງອະຣະນະວິພັງ

[๓๘๔] ເຮົາກ່າວຄຳນີ້ໄວ້ວ່າ "ພິກຂຸບໍ່ເພິ່ງປະກອບເລື້ອຍ ໆ ເຊິ່ງສຸກໃນກາມ ອັນຊາມ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ແລະບໍ່ເພິ່ງປະກອບເລື້ອຍ ໆ ເຊິ່ງອັດຕະກິລະມະຖານຸໂຍກ ອັນເປັນທຸກ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ທຳຄືການປະກອບເລື້ອຍ ໆ ເຊິ່ງໂສມະນັດຂອງບຸກຄົນຜູ້ມີຄວາມສຸກອັນເກີດຈາກການ

ອັນຊາມ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດນີ້ ມີທຸກ ມີຄວາມບຽດບຽນ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຜິດ ທຳຄືການບໍ່ປະກອບເລື້ອຍ ໆ ເຊິ່ງໂສມະນັດຂອງບຸກຄົນຜູ້ມີຄວາມສຸກອັນເກີດຈາກກາມ ອັນຊາມ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດນີ້ ບໍ່ມີທຸກ ບໍ່ມີຄວາມບຽດບຽນ ບໍ່ມີຄວາມຄັບແຄ້ນ ບໍ່ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຖືກ

ທຳຄືອັດຕະກິລະມະຖານຸໂຍກ ອັນເປັນທຸກ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ນີ້ມີທຸກ ມີຄວາມບຽດບຽນ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຜິດ ທຳເປັນເຫດບໍ່ປະກອບເລື້ອຍ ໆ ເຊິ່ງອັດຕະກິລະມະຖານຸໂຍກ ອັນເປັນທຸກ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດນີ້ ບໍ່ມີທຸກ ບໍ່ມີຄວາມບຽດບຽນ ບໍ່ມີຄວາມຄັບແຄ້ນ ບໍ່ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຖືກ

ຄຳທີ່ເຮົາກ່າວໄວ້ວ່າ "ພິກຂຸບໍ່ເພິ່ງປະກອບເລື້ອຍ ໆ ເຊິ່ງສຸກໃນກາມອັນຊາມ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ແລະບໍ່ເພິ່ງປະກອບເລື້ອຍ ໆ ເຊິ່ງອັດຕະກິລະມະຖານຸໂຍກ ອັນເປັນທຸກ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

## ອະຣິຍະມັກມີອົງ ໘

[໓໘໕] ເຮົາກ່າວຄຳນີ້ໄວ້ວ່າ "ມັດຊິມາປະຕິປະທາບໍ່ອຽງເຂົ້າໃກ້ທີ່ສຸດ ໒ ແນວນັ້ນ ທີ່ຕະຖາຄົດໄດ້ຕັດສະຣູ້ແລ້ວ ອັນເປັນປະຕິປະທາກໍ່ໃຫ້ເກີດຈັກຂຸ ກໍ່ໃຫ້ເກີດຍານ ເປັນໄປເພື່ອຄວາມສະງົບ ເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ ເພື່ອນິບພານ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ຄື ອະຣິຍະມັກມີອົງ ໘ ນີ້ ໄດ້ແກ່

໑. ສຳມາທິດຖິ (ເຫັນຖືກ)
໒. ສຳມາສັງກັບປະ (ຄິດຖືກ)
໓. ສຳມາວາຈາ (ເຈົ້າຈາຊອບ)
໔. ສຳມາກຳມັນຕະ (ການງານຖືກ)
໕. ສຳມາອາຊີວະ (ລ້ຽງຊີວິດຖືກ)
໖. ສຳມາວາຍາມະ (ພະຍາຍາມຖືກ)
໗. ສຳມາສະຕິ (ຣະນຶກຖືກ)
໘. ສຳມາສະມາທິ (ຕັ້ງຈິດໝັ້ນຖືກ)

ຄຳທີ່ເຮົາກ່າວໄວ້ວ່າ "ມັດຊິມາປະຕິປະທາບໍ່ອຽງເຂົ້າໃກ້ບ່ອນສຸດ ໒ ຢ່າງນັ້ນ ທີ່ຕະຖາຄົດໄດ້ຕັດສະຣູ້ແລ້ວ ອັນເປັນປະຕິປະທາກໍ່ໃຫ້ເກີດຈັກຂຸ ກໍ່ໃຫ້ເກີດຍານ ເປັນໄປເພື່ອຄວາມສະງົບ ເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ ເພື່ອນິບພານ"[໑] ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

[໓໔໖] ເຮົາກ່າວຄຳນີ້ໄວ້ວ່າ "ພິກຂຸເພິ່ງຮູ້ຈັກການຍົກຍ້ອງແລະການຕຳໜິ ເມື່ອຮູ້ແລ້ວ ບໍ່ເພິ່ງຍ້ອງຍໍ ບໍ່ເພິ່ງຕຳໜິ ເພິ່ງສະແດງທຳທີ່ນັ້ນ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ການຍົກຍ້ອງ ການຕຳໜິ ແລະ ການບໍ່ສະແດງທຳ ເປັນແນວໃດ?

ຄື ບຸກຄົນເມື່ອກ່າວດັ່ງນີ້ວ່າ "ຊົນເຫຼົ່າໃດປະກອບເລື້ອຍ ໆ ເຊິ່ງໂສມະນັດຂອງບຸກຄົນຜູ້ມີຄວາມສຸກອັນເກີດຈາກກາມ ອັນຊາມ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ຊົນເຫຼົ່ານັ້ນທັງໝົດຈຶ່ງມີທຸກ ມີຄວາມບຽດບຽນ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ເປັນຜູ້ປະຕິບັດຜິດ" ຊື່ວ່າ ຕຳໜິຊົນພວກໜຶ່ງ

ບຸກຄົນເມື່ອກ່າວດັ່ງນີ້ວ່າ "ຊົນເຫຼົ່າໃດບໍ່ປະກອບເລື້ອຍ ໆ ເຊິ່ງໂສມະນັດຂອງບຸກຄົນຜູ້ມີຄວາມສຸກອັນເກີດຈາກກາມ ອັນຊາມ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ຊົນເຫຼົ່ານັ້ນທັງໝົດຈຶ່ງບໍ່ມີທຸກ ບໍ່ມີຄວາມບຽດບຽນ ບໍ່ມີຄວາມຄັບແຄ້ນ ບໍ່ມີຄວາມຮ້ອນຮົນ ເປັນຜູ້ປະຕິບັດຖືກ" ຊື່ວ່າ ຍ້ອງຍໍຊົນພວກໜຶ່ງ

ບຸກຄົນເມື່ອກ່າວດັ່ງນີ້ວ່າ "ຊົນເຫຼົ່າໃດປະກອບເລື້ອຍ ໆ ເຊິ່ງອັດຕະກິລະມະຖານຸໂຍຄ ອັນເປັນທຸກ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ຊົນເຫຼົ່ານັ້ນທັງໝົດ ຈຶ່ງມີທຸກ ມີຄວາມບຽດບຽນ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ເປັນຜູ້ປະຕິບັດຜິດ" ຊື່ວ່າ ຕຳໜິຊົນພວກໜຶ່ງ

ບຸກຄົນເມື່ອກ່າວດັ່ງນີ້ວ່າ "ຊົນເຫຼົ່າໃດ ບໍ່ປະກອບເລື້ອຍ ໆ ເຊິ່ງອັດຕະກິລະມະຖານຸໂຍກ ອັນເປັນທຸກ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ຊົນເຫຼົ່ານັ້ນທັງໝົດ ຈຶ່ງບໍ່ມີທຸກ ບໍ່ມີຄວາມບຽດບຽນ ບໍ່ມີຄວາມຄັບແຄ້ນ ບໍ່ມີຄວາມຮ້ອນຮົນ ເປັນຜູ້ປະຕິບັດຖືກ" ຊື່ວ່າ ຍ້ອງຍໍຊົນພວກໜຶ່ງ

ບຸກຄົນເມື່ອກ່າວດັ່ງນີ້ວ່າ "ຊົນເຫຼົ່າໃດເຫຼົ່າໜຶ່ງ ຍັງລະພະວະສັງໂຍດ[១]ບໍ່ໄດ້ ຊົນເຫຼົ່ານັ້ນທັງໝົດຈຶ່ງມີທຸກ ມີຄວາມບຽດບຽນ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ເປັນຜູ້ປະຕິບັດຜິດ" ຊື່ວ່າຕຳໜິຊົນພວກໜຶ່ງ

ບຸກຄົນເມື່ອກ່າວດັ່ງນີ້ວ່າ "ຊົນເຫຼົ່າໃດເຫຼົ່າໜຶ່ງ ລະພະວະສັງໂຍດໄດ້ແລ້ວ ຊົນເຫຼົ່ານັ້ນທັງໝົດຈຶ່ງບໍ່ມີທຸກ ບໍ່ມີຄວາມບຽດບຽນ ບໍ່ມີຄວາມຄັບແຄ້ນ ບໍ່ມີຄວາມຮ້ອນຮົນ ເປັນຜູ້ປະຕິບັດຖືກ" ຊື່ວ່າຍ້ອງຍໍຊົນພວກໜຶ່ງ

ພິກຂຸທັງຫຼາຍ ການຍົກຍ້ອງ ການຕຳໜິ ແລ ະການບໍ່ສະແດງທຳ ເປັນແນວນີ້ແລ

[໓໔໗] ການບໍ່ຍ້ອງຍໍ ການບໍ່ຕຳໜິ ແລະ ການສະແດງທຳ ເປັນແນວໃດ?

ຄື ບຸກຄົນບໍ່ກ່າວແນວນີ້ວ່າ "ຊົນເຫຼົ່າໃດປະກອບເລື້ອຍ ໆ ເຊິ່ງໂສມະນັດຂອງບຸກຄົນຜູ້ມີຄວາມສຸກອັນເກີດຈາກກາມ ອັນຊາມ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ຊົນເຫຼົ່ານັ້ນທັງໝົດຈຶ່ງມີທຸກ ມີຄວາມບຽດບຽນ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ເປັນຜູ້ປະຕິບັດຜິດ" ເຂົາເມື່ອກ່າວດັ່ງນີ້ວ່າ "ທຳຄືການປະກອບເລື້ອຍ ໆ ນີ້ແລ ມີທຸກ ມີຄວາມບຽດບຽນ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຜິດ" ຊື່ວ່າສະແດງທຳທີ່ນັ້ນ

ບຸກຄົນບໍ່ກ່າວແນວນີ້ວ່າ "ຊົນເຫຼົ່າໃດບໍ່ປະກອບເລື້ອຍ ໆ ເຊິ່ງໂສມະນັດຂອງບຸກຄົນຜູ້ມີຄວາມສຸກອັນເກີດຈາກກາມ ອັນຊາມ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ຊົນເຫຼົ່ານັ້ນທັງໝົດຈຶ່ງບໍ່ມີທຸກ ບໍ່ມີຄວາມບຽດບຽນ ບໍ່ມີຄວາມຄັບແຄ້ນ ບໍ່ມີຄວາມຮ້ອນຮົນ ເປັນຜູ້ປະຕິບັດຖືກ"

ເຂົາເມື່ອກ່າວດັ່ງນີ້ວ່າ "ທຳຄືການບໍ່ປະກອບເລື້ອຍ ໆ ນີ້ແລ ບໍ່ມີທຸກ ບໍ່ມີຄວາມບຽດບຽນ ບໍ່ມີຄວາມຄັບແຄ້ນ ບໍ່ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຖືກ" ຊື່ວ່າສະແດງທຳທີ່ນັ້ນ

ບຸກຄົນບໍ່ກ່າວແນວນີ້ວ່າ "ຊົນເຫຼົ່າໃດປະກອບເລື້ອຍ ໆ ເຊິ່ງອັດຕະກິລະມະຖານຸໂຍກອັນເປັນທຸກ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ຊົນເຫຼົ່ານັ້ນທັງໝົດຈຶ່ງມີທຸກ ມີຄວາມບຽດບຽນ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ເປັນຜູ້ປະຕິບັດຜິດ" ເຂົາເມື່ອກ່າວດັ່ງນີ້ວ່າ "ທຳຄືການປະກອບເລື້ອຍ ໆ ນີ້ແລ ມີທຸກ ມີຄວາມບຽດບຽນ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຜິດ" ຊື່ວ່າ ສະແດງທຳທີ່ນັ້ນ

ບຸກຄົນບໍ່ກ່າວແນວນີ້ວ່າ "ຊົນເຫຼົ່າໃດບໍ່ປະກອບເລື້ອຍ ໆ ເຊິ່ງອັດຕະກິລະມະຖານຸໂຍກອັນເປັນທຸກ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ຊົນເຫຼົ່ານັ້ນທັງໝົດ

ຈຶ່ງບໍ່ມີທຸກ ບໍ່ມີຄວາມບຽດບຽນ ບໍ່ມີຄວາມຄັບແຄ້ນ ບໍ່ມີຄວາມຮ້ອນຮົນ ເປັນຜູ້ປະຕິບັດຖືກ" ເຂົາເມື່ອກ່າວດັ່ງນີ້ວ່າ "ທຳຄືການບໍ່ປະກອບເລື້ອຍ ໆ ນີ້ແລ ບໍ່ມີທຸກ ບໍ່ມີຄວາມບຽດບຽນ ບໍ່ມີຄວາມຄັບແຄ້ນ ບໍ່ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຖືກ" ຊື່ວ່າ ສະແດງທຳທີ່ນັ້ນ

ບຸກຄົນບໍ່ກ່າວແນວນີ້ວ່າ "ຊົນເຫຼົ່າໃດເຫຼົ່າໜຶ່ງ ຍັງລະພະວະສັງໂຍດບໍ່ໄດ້ ຊົນເຫຼົ່ານັ້ນທັງໝົດຈຶ່ງມີທຸກ ມີຄວາມບຽດບຽນ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ເປັນຜູ້ປະຕິບັດຜິດ" ເຂົາເມື່ອກ່າວດັ່ງນີ້ວ່າ "ເມື່ອບຸກຄົນຍັງລະພະວະສັງໂຍດບໍ່ໄດ້ ແມ່ນພົບກໍເປັນອັນລະບໍ່ໄດ້" ຊື່ວ່າສະແດງທຳທີ່ນັ້ນ

ບຸກຄົນບໍ່ກ່າວແນວນີ້ວ່າ "ຊົນເຫຼົ່າໃດເຫຼົ່າໜຶ່ງ ລະພະວະສັງໂຍດໄດ້ແລ້ວ ຊົນເຫຼົ່ານັ້ນ

ທັງໝົດຈຶ່ງບໍ່ມີທຸກ ບໍ່ມີຄວາມບຽດບຽນ ບໍ່ມີຄວາມຄັບແຄ້ນ ບໍ່ມີຄວາມຮ້ອນຮົນ ເປັນຜູ້ປະຕິບັດຖືກ" ເຂົາເມື່ອກ່າວດັ່ງນີ້ວ່າ "ກໍເມື່ອບຸກຄົນລະພະອະສັງໂຍດໄດ້ແລ້ວ ແມ່ນພົບກໍເປັນອັນລະໄດ້ແລ້ວ" ຊື່ວ່າ ສະແດງທຳທີ່ນັ້ນ

ພິກຂຸທັງຫຼາຍ ການບໍ່ຍ້ອງຍໍ ການບໍ່ຕຳໜິ ແລະ ການສະແດງທຳ ເປັນແນວນີ້

ຄຳທີ່ເຮົາກ່າວໄວ້ວ່າ "ພິກຂຸເພິ່ງຮູ້ຈັກການຍົກຍ້ອງ ແລະ ການຕຳໜິ ເມື່ອຮູ້ແລ້ວ ບໍ່ເພິ່ງຍ້ອງຍໍ ບໍ່ເພິ່ງຕຳໜິ ເພິ່ງສະແດງທຳທີ່ນັ້ນ" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

## ກາມມະຄຸນ ໕ ປະການ

[໓໔໗] ເຮົາກ່າວຄຳນີ້ໄວ້ວ່າ "ພິກຂຸເພິ່ງຮູ້ການຕັດສິນຄວາມສຸກ ເມື່ອຮູ້ແລ້ວ ເພິ່ງປະກອບເລື້ອຍ ໆ ເຊິ່ງຄວາມສຸກໃນພາຍໃນ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ກາມມະຄຸນ ໕ ປະການ ນີ້
ກາມມະຄຸນ ໕ ປະການ ອັນໃດແດ່ ຄື

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ
໒. ສຽງທີ່ເພິ່ງຮູ້ແຈ້ງທາງຫູ ฯລฯ
໓. ກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ฯລฯ
໔. ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ฯລฯ
໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ພິກຂຸທັງຫຼາຍ ກາມມະຄຸນ ໕ ປະການເປັນແນວນີ້
ສຸກໂສມະນັດທີ່ອາໄສກາມມະຄຸນ ໕ ປະການນີ້ເກີດຂຶ້ນ ເຮົາຮຽກວ່າ ສຸກອັນເກີດຈາກກາມ ເປັນສຸກທີ່ເກີດແຕ່ເມຖຸນທຳ໑ ເປັນສຸກຂອງປຸຖຸຊົນ ບໍ່ແມ່ນສຸກຂອງພຣະອະຣິຍະ ເຮົາກ່າວວ່າ "ພິກຂຸບໍ່ເພິ່ງເສບ ບໍ່ເພິ່ງຈະເລີນ ບໍ່ເພິ່ງເຮັດໃຫ້ຫຼາຍ ເພິ່ງຢ້ານສຸກຂະນິດນີ້"

ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປິຕິແລະສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານ ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປິຕິແລະສຸກອັນເກີດຈາກສະມາທິ ฯລฯ ບັນລຸຕະຕິຍະຊານ ฯລฯ

ບັນລຸຈະຕຸດຖະຊານ ໆລໆ ສຸກນີ້ເຮົາຮຽກວ່າ ເນກຂຳມະສຸກ ເປັນສຸກອັນເກີດຈາກຄວາມສະຫງັດ ເປັນສຸກເກີດຈາກຄວາມສະງົບ ເປັນສຸກເກີດຈາກການຕັດສະຮູ້ ເຮົາກ່າວວ່າ "ພິກຂຸເພິ່ງເສບ ເພິ່ງຈະເລີນ ເພິ່ງເຮັດໃຫ້ຫຼາຍ ບໍ່ເພິ່ງຢ້ານສຸກຂະນິດນີ້"

ຄຳທີ່ເຮົາກ່າວໄວ້ວ່າ "ພິກຂຸເພິ່ງຮູ້ການຕັດສິນຄວາມສຸກ ເມື່ອຮູ້ແລ້ວ ເພິ່ງປະກອບເລື້ອຍ ໆ ເຊິ່ງຄວາມສຸກໃນພາຍໃນ" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

[໓໘໙] ເຮົາກ່າວຄຳນີ້ໄວ້ວ່າ "ພິກຂຸບໍ່ເພິ່ງກ່າວຄວາມລັບ ບໍ່ເພິ່ງກ່າວຄຳລ່ວງເກີນຕໍ່ໜ້າ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ໃນເລື້ອງນັ້ນ ພິກຂຸຮູ້ຄວາມລັບອັນໃດ ທີ່ບໍ່ເປັນຄວາມຈິງ ບໍ່ເປັນຄວາມແທ້ ບໍ່ປະກອບດ້ວຍປະໂຫຍດ ບໍ່ເພິ່ງກ່າວຄວາມລັບນັ້ນເປັນອັນຂາດ ແມ່ນຮູ້ວ່າຄວາມລັບອັນໃດທີ່ເປັນຄວາມຈິງ ເປັນຄວາມແທ້ ແຕ່ບໍ່ປະກອບດ້ວຍປະໂຫຍດ ກໍເພິ່ງຕັ້ງໃຈຮູ້ເພື່ອຈະບໍ່ກ່າວຄວາມລັບນັ້ນ ແລະ ເພິ່ງຮູ້ຄວາມລັບອັນໃດເປັນຄວາມຈິງ ເປັນຄວາມແທ້ ປະກອບດ້ວຍປະໂຫຍດ ໃນເລື້ອງນັ້ນ ພິກຂຸເພິ່ງຮູ້ເວລາເພື່ອຈະກ່າວຄວາມລັບນັ້ນ

ພິກຂຸທັງຫຼາຍ ໃນເລື້ອງນັ້ນ ພິກຂຸຮູ້ຄຳລ່ວງເກີນຕໍ່ໜ້າອັນໃດ ທີ່ບໍ່ເປັນຄຳຈິງ ບໍ່ເປັນຄຳແທ້ ບໍ່ປະກອບດ້ວຍປະໂຫຍດ ບໍ່ເພິ່ງກ່າວຄຳລ່ວງເກີນຕໍ່ໜ້ານັ້ນເປັນອັນຂາດ ແມ່ນຮູ້ວ່າຄຳລ່ວງເກີນຕໍ່ໜ້າອັນໃດ ທີ່ເປັນຄຳຈິງ ເປັນຄຳແທ້ ແຕ່ບໍ່ປະກອບດ້ວຍປະໂຫຍດ ກໍເພິ່ງຕັ້ງໃຈຮູ້ເພື່ອຈະບໍ່ກ່າວຄຳລ່ວງເກີນຕໍ່ໜ້ານັ້ນ ແລະ ເພິ່ງຮູ້ຄຳລ່ວງເກີນຕໍ່ໜ້າອັນໃດທີ່ເປັນຄຳຈິງ ເປັນຄຳແທ້ ປະກອບດ້ວຍປະໂຫຍດ ໃນເລື້ອງນັ້ນ ພິກຂຸເພິ່ງຮູ້ເວລາເພື່ອຈະກ່າວຄຳລ່ວງເກີນຕໍ່ໜ້ານັ້ນ

ຄຳທີ່ເຮົາກ່າວໄວ້ວ່າ "ພິກຂຸບໍ່ເພິ່ງກ່າວຄວາມລັບ ບໍ່ເພິ່ງກ່າວຄຳລ່ວງເກີນຕໍ່ໜ້າ" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

[໓໓໐] ເຮົາກ່າວຄຳນີ້ໄວ້ວ່າ "ພິກຂຸເມື່ອບໍ່ຮີບຟ້າວຈຶ່ງເວົ້າ ເມື່ອຮີບຟ້າວບໍ່ຄວນເວົ້າ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ໃນເລື້ອງນັ້ນ ເມື່ອພິກຂຸຮີບຟ້າວເວົ້າ ແມ່ນກາຍກໍລຳບາກ ຈິດກໍແກວ່ງ ສຽງກໍມົວ ຄໍກໍແຫ້ງ ແມ່ນຄຳເວົ້າທີ່ພິກຂຸຮີບຟ້າວເວົ້າກໍບໍ່ສະລະສະລວຍ ຟັງບໍ່ເຂົ້າໃຈ

ພິກຂຸທັງຫຼາຍ ໃນເລື້ອງນັ້ນ ເມື່ອພິກຂຸບໍ່ຮີບຟ້າວເວົ້າ ກາຍກໍບໍ່ລຳບາກ ຈິດກໍບໍ່ແກວ່ງ ສຽງກໍບໍ່ມົວ ຄໍກໍບໍ່ແຫ້ງ ແມ່ນຄຳເວົ້າທີ່ພິກຂຸຜູ້ບໍ່ຮີບຟ້າວເວົ້າ ກໍສະລະສະລວຍ ຟັງເຂົ້າໃຈ

ຄຳທີ່ເຮົາກ່າວໄວ້ວ່າ "ພິກຂຸເມື່ອບໍ່ຮີບຟ້າວຈຶ່ງເວົ້າ ເມື່ອຮີບຟ້າວບໍ່ຄວນເວົ້າ" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

[໓໓໑] ເຮົາກ່າວຄຳນີ້ໄວ້ວ່າ "ພິກຂຸບໍ່ເພິ່ງຍຶດພາສາທ້ອງຖິ່ນ ບໍ່ເພິ່ງແນມຂ້າມຄຳເວົ້າສາມັນ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ການຍຶດພາສາທ້ອງຖິ່ນ ແລະການແນມຂ້າມຄຳເວົ້າສາມັນ ເປັນແນວໃດ?

ຄື ພາຊະນະຊະນິດດຽວກັນນັ້ນໃນໂລກນີ້ ບາງທ້ອງຖິ່ນຮູ້ຈັກກັນວ່າ "ປາຕິ" ບາງທ້ອງຖິ່ນຮູ້ຈັກກັນວ່າ "ປັດຕະ" ບາງທ້ອງຖິ່ນຮູ້ຈັກກັນວ່າ "ປິດຖະ" ບາງທ້ອງຖິ່ນຮູ້ຈັກກັນວ່າ "ສະຣາວະ" ບາງທ້ອງຖິ່ນຮູ້ຈັກກັນວ່າ "ທະໂຣສະ" ບາງທ້ອງຖິ່ນຮູ້ຈັກກັນວ່າ "ໂປນະ" ບາງທ້ອງຖິ່ນຮູ້ຈັກກັນວ່າ "ໜະ" ບາງທ້ອງຖິ່ນຮູ້ຈັກກັນວ່າ "ປິປິລະ" ພິກຂຸເວົ້າດ້ວຍຄວາມຍຶດໝັ້ນ ຖືໝັ້ນໂດຍວິທີທີ່ຊິນທັງຫຼາຍໃນທ້ອງຖິ່ນນັ້ນ ໆ ຈະຮູ້ຈັກພາຊະນະນັ້ນວ່າ "ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

ການຍຶດພາສາທ້ອງຖິ່ນ ແລະ ການແນມຂ້າມຄຳເວົ້າສາມັນ ເປັນແນວນີ້

[໓໓໔] ການບໍ່ຍຶດພາສາທ້ອງຖິ່ນ ແລະ ການບໍ່ແນມຂ້າມຄຳເວົ້າສາມັນ ເປັນແນວໃດ?

ຄື ພາຊະນະຊະນິດດຽວກັນນັ້ນແລໃນໂລກນີ້ ບາງທ້ອງຖິ່ນຮູ້ຈັກກັນວ່າ "ປາຕິ" ບາງທ້ອງຖິ່ນຮູ້ຈັກກັນວ່າ "ປັດຕະ" ບາງທ້ອງຖິ່ນຮູ້ຈັກກັນວ່າ "ປິດຖະ" ບາງທ້ອງຖິ່ນຮູ້ຈັກກັນວ່າ "ສະຣາວະ" ບາງທ້ອງຖິ່ນຮູ້ຈັກກັນວ່າ "ທະໂຣສະ" ບາງທ້ອງຖິ່ນຮູ້ຈັກກັນວ່າ "ໂປນະ" ບາງທ້ອງຖິ່ນຮູ້ຈັກກັນວ່າ "ນະ" ບາງທ້ອງຖິ່ນຮູ້ຈັກກັນວ່າ "ປິປິລະ" ພິກຂຸເວົ້າແນວບໍ່ຖືໝັ້ນໂດຍວິທີທີ່ຊິນທັງຫຼາຍໃນທ້ອງຖິ່ນນັ້ນ ໆ ຈະຮູ້ຈັກພາຊະນະນັ້ນໄດ້ວ່າ "ໄດ້ຂ່າວວ່າ ທ່ານຜູ້ມີອາຍຸເຫຼົ່ານີ້ເວົ້າໝາຍເຖິງພາຊະນະນີ້"

ພິກຂຸທັງຫຼາຍ ການບໍ່ຍຶດພາສາທ້ອງຖິ່ນ ແລະ ການບໍ່ແນມຂ້າມຄຳເວົ້າສາມັນ ເປັນແນວນີ້
ຄຳທີ່ເຮົາກ່າວໄວ້ວ່າ "ບໍ່ເພິ່ງຍຶດພາສາທ້ອງຖິ່ນ ບໍ່ເພິ່ງແນມຂ້າມຄຳເວົ້າສາມັນ" ນັ້ນຍ້ອນອາໄສຄຳນີ້ ເຮົາຈຶ່ງກ່າວໄວ້

[໓໓໓] ພິກຂຸທັງຫຼາຍ ໃນອະຣະນະວິພັງນັ້ນ ທຳຄືການປະກອບເລື້ອຍ ໆ ເຊິ່ງໂສມະນັດຂອງບຸກຄົນຜູ້ມີຄວາມສຸກອັນເກີດຈາກກາມ ອັນຊາມ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດນີ້ ມີທຸກ ມີຄວາມບຽດບຽນ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຜິດ ຍ້ອນແນວນັ້ນ ທຳນີ້ຈຶ່ງຊື່ວ່າ ເປັນທຳມີກິເລດ

ແຕ່ໃນເລື້ອງນັ້ນ ທຳຄືການບໍ່ປະກອບເລື້ອຍ ໆ ເຊິ່ງໂສມະນັດຂອງບຸກຄົນຜູ້ມີຄວາມສຸກອັນເກີດຈາກກາມ ອັນຊາມ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດນີ້ ບໍ່ມີທຸກ ບໍ່ມີຄວາມບຽດບຽນ ບໍ່ມີຄວາມຄັບແຄ້ນ ບໍ່ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຖືກ ຍ້ອນແນວນັ້ນ ທຳນີ້ຈຶ່ງຊື່ວ່າ ເປັນທຳບໍ່ມີກິເລດ

[໓໓໔] ພິກຂຸທັງຫຼາຍ ໃນອະຣະນະວິພັງນັ້ນ ທຳຄືອັດຕະກິລະມະຖານຸໂຍຄ ອັນເປັນທຸກ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດນີ້ ມີທຸກ ມີຄວາມບຽດບຽນ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຜິດ ຍ້ອນແນວນັ້ນ ທຳນີ້ຈຶ່ງຊື່ວ່າເປັນທຳມີກິເລດ

ແຕ່ໃນເລື້ອງນັ້ນ ທຳຄືການບໍ່ປະກອບເລື້ອຍ ໆ ເຊິ່ງອັດຕະກິລະມະຖານຸໂຍຄ ອັນເປັນທຸກ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດນີ້ ບໍ່ມີທຸກ ບໍ່ມີຄວາມບຽດບຽນ ບໍ່ມີຄວາມຄັບແຄ້ນ ບໍ່ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຖືກ ຍ້ອນແນວນັ້ນ ທຳນີ້ຈຶ່ງຊື່ວ່າ ເປັນທຳບໍ່ມີກິເລດ

[໓໓໕] ພິກຂຸທັງຫຼາຍ ໃນອະຣະນະວິພັງນັ້ນ ທຳຄື ມັດຊິມາປະຕິປະທາ ທີ່ຕະຖາຄົດໄດ້ຕັດສະຣູ້ແລ້ວ ອັນເປັນປະຕິປະທາກໍ່ໃຫ້ເກີດຈັກຂຸ ກໍ່ໃຫ້ເກີດຍານ ເປັນໄປເພື່ອຄວາມສະງົບ ເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ ເພື່ອນິບພານນີ້ ບໍ່ມີທຸກ ບໍ່ມີຄວາມບຽດບຽນ ບໍ່ມີຄວາມຄັບແຄ້ນ ບໍ່ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຖືກ ຍ້ອນແນວນັ້ນ ທຳນີ້ຈຶ່ງຊື່ວ່າເປັນທຳບໍ່ມີກິເລດ

[໓໓໖] ພິກຂຸທັງຫຼາຍ ໃນອະຣະນະວິພັງນັ້ນ ທຳຄືການຍົກຍ້ອງ ການຕຳໜິ ແລະ ການບໍ່ສະແດງທຳນີ້ ມີທຸກ ມີຄວາມບຽດບຽນ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຜິດ ຍ້ອນແນວນັ້ນ ທຳນີ້ຈຶ່ງຊື່ວ່າເປັນທຳມີກິເລດ

ແຕ່ໃນເລື້ອງນັ້ນ ທຳຄືການບໍ່ຍ້ອງຍໍ ການບໍ່ຕຳໜິ ການສະແດງທຳທີ່ນັ້ນນີ້ ບໍ່ມີທຸກ ບໍ່ມີຄວາມບຽດບຽນ ບໍ່ມີຄວາມຄັບແຄ້ນ ບໍ່ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຖືກ ຍ້ອນແນວນັ້ນ ທຳນີ້ຈຶ່ງຊື່ວ່າເປັນທຳບໍ່ມີກິເລດ

[໓໓໗] ພິກຂຸທັງຫຼາຍ ໃນອະຣະນະວິພັງນັ້ນ ທຳຄືສຸກອັນເກີດຈາກກາມ ສຸກອັນເກີດຈາກການມີເພດສຳພັນ ສຸກຂອງປຸຖຸຊົນ ບໍ່ແມ່ນສຸກຂອງພຣະອະຣິຍະນີ້ ມີທຸກ ມີຄວາມບຽດບຽນ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຜິດ ຍ້ອນແນວນັ້ນ ທຳນີ້ຈຶ່ງຊື່ວ່າເປັນທຳມີກິເລດ

ແຕ່ໃນເລື້ອງນັ້ນ ທຳຄືເນກຂຳມະສຸກ ສຸກເກີດຈາກຄວາມສະຫງັດ ສຸກເກີດຈາກຄວາມສະງົບ ສຸກເກີດຈາກການຕັດສະຣູ້ນີ້ ບໍ່ມີທຸກ ບໍ່ມີຄວາມບຽດບຽນ ບໍ່ມີຄວາມຄັບແຄ້ນ ບໍ່ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຖືກ ຍ້ອນແນວນັ້ນ ທຳນີ້ຈຶ່ງຊື່ວ່າເປັນທຳບໍ່ມີກິເລດ

[໓໓໘] ພິກຂຸທັງຫຼາຍ ໃນອະຣະນະວິພັງນັ້ນ ທຳຄື ຄວາມລັບທີ່ບໍ່ເປັນຄວາມຈິງ ບໍ່ເປັນຄວາມແທ້ ບໍ່ປະກອບດ້ວຍປະໂຫຍດນີ້ ມີທຸກ ມີຄວາມບຽດບຽນ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຜິດ ຍ້ອນແນວນັ້ນ ທຳນີ້ຈຶ່ງຊື່ວ່າເປັນທຳມີກິເລດ

ແຕ່ໃນເລື້ອງນັ້ນ ທຳຄືຄວາມລັບທີ່ເປັນຄວາມຈິງ ເປັນຄວາມແທ້ ແຕ່ບໍ່ປະກອບດ້ວຍປະໂຫຍດນີ້ ມີທຸກ ມີຄວາມບຽດບຽນ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຜິດ ຍ້ອນແນວນັ້ນ ທຳນີ້ຈຶ່ງຊື່ວ່າ ເປັນທຳມີກິເລດ

ແຕ່ໃນເລື້ອງນັ້ນ ທຳຄືຄວາມລັບທີ່ເປັນຄວາມຈິງ ເປັນຄວາມແທ້ ປະກອບດ້ວຍປະໂຫຍດນີ້ ບໍ່ມີທຸກ ບໍ່ມີຄວາມບຽດບຽນ ບໍ່ມີຄວາມຄັບແຄ້ນ ບໍ່ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຖືກ ຍ້ອນແນວນັ້ນ ທຳນີ້ຈຶ່ງຊື່ວ່າເປັນທຳບໍ່ມີກິເລດ

[໓໓໙] ພິກຂຸທັງຫຼາຍ ໃນອະຣະນະວິພັງນັ້ນ ທຳຄືຄຳລ່ວງເກີນຕໍ່ໜ້າ ທີ່ບໍ່ເປັນຄຳຈິງ ບໍ່ເປັນຄຳແທ້ ບໍ່ປະກອບດ້ວຍປະໂຫຍດນີ້ ມີທຸກ ມີຄວາມບຽດບຽນ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຜິດ ຍ້ອນແນວນັ້ນ ທຳນີ້ຈຶ່ງຊື່ວ່າ ເປັນທຳມີກິເລດ

ແຕ່ໃນເລື້ອງນັ້ນ ທຳຄືຄຳລ່ວງເກີນຕໍ່ໜ້າ ທີ່ເປັນຄຳຈິງ ເປັນຄຳແທ້ ແຕ່ບໍ່ປະກອບດ້ວຍປະໂຫຍດນີ້ ມີທຸກ ມີຄວາມບຽດບຽນ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຜິດ ຍ້ອນແນວນັ້ນ ທຳນີ້ຈຶ່ງຊື່ວ່າເປັນທຳມີກິເລດ

ແຕ່ໃນເລື້ອງນັ້ນ ທຳຄືຄຳລ່ວງເກີນຕໍ່ໜ້າ ທີ່ເປັນຄຳຈິງ ເປັນຄຳແທ້ ປະກອບດ້ວຍປະໂຫຍດນີ້ ບໍ່ມີທຸກ ບໍ່ມີຄວາມບຽດບຽນ ບໍ່ມີຄວາມຄັບແຄ້ນ ບໍ່ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຖືກ ຍ້ອນແນວນັ້ນ ທຳນີ້ຈຶ່ງຊື່ວ່າເປັນທຳບໍ່ມີກິເລດ

[໓໔໐] ພິກຂຸທັງຫຼາຍ ໃນອະຣະນະວິພັງນັ້ນ ທຳຄືຄຳທີ່ບຸກຄົນຜູ້ຮີບຟ້າວເວົ້ານີ້ ມີທຸກ ມີຄວາມບຽດບຽນ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຜິດ ຍ້ອນແນວນັ້ນ ທຳນີ້ຈຶ່ງຊື່ວ່າເປັນທຳມີກິເລດ

ແຕ່ໃນເລື້ອງນັ້ນ ທຳຄືຄຳທີ່ບຸກຄົນຜູ້ບໍ່ຮີບຟ້າວເວົ້ານີ້ ບໍ່ມີທຸກ ບໍ່ມີຄວາມບຽດບຽນ ບໍ່ມີຄວາມຄັບແຄ້ນ ບໍ່ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຖືກ ຍ້ອນແນວນັ້ນ ທຳນີ້ຈຶ່ງຊື່ວ່າເປັນທຳບໍ່ມີກິເລດ

[໓໔໑] ພິກຂຸທັງຫຼາຍ ໃນອະຣະນະວິພັງນັ້ນ ທຳຄືການຍຶດພາສາທ້ອງຖິ່ນ ແລະການແນມຂ້າມຄຳເວົ້າສາມັນນີ້ ມີທຸກ ມີຄວາມບຽດບຽນ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຜິດ ຍ້ອນແນວນັ້ນ ທຳນີ້ຈຶ່ງຊື່ວ່າເປັນທຳມີກິເລດ

ແຕ່ໃນເລື້ອງນັ້ນ ທຳຄືການບໍ່ຍຶດພາສາທ້ອງຖິ່ນ ແລະ ການບໍ່ແນມຂ້າມຄຳເວົ້າສາມັນນີ້ ບໍ່ມີທຸກ ບໍ່ມີຄວາມບຽດບຽນ ບໍ່ມີຄວາມຄັບແຄ້ນ ບໍ່ມີຄວາມຮ້ອນຮົນ ເປັນຂໍ້ປະຕິບັດຖືກ ຍ້ອນແນວນັ້ນ ທຳນີ້ຈຶ່ງຊື່ວ່າເປັນທຳບໍ່ມີກິເລດ

ພິກຂຸທັງຫຼາຍ ຍ້ອນແນວນັ້ນ ທ່ານທັງຫຼາຍ ເພິ່ງສຶກສາໃນອະຣະນະວິພັງນີ້ແນວນີ້ແລ ວ່າ "ເຮົາທັງຫຼາຍ ຮູ້ທຳທີ່ມີກິເລດ ແລະ ຮູ້ທຳທີ່ບໍ່ມີກິເລດແລ້ວ ຈັກປະຕິບັດຕາມຂໍ້ປະຕິບັດເພື່ອບໍ່ມີກິເລດ" ກຸນລະບຸດຜູ້ມີນາມວ່າສຸພູຕິ ໄດ້ປະຕິບັດຕາມຂໍ້ປະຕິບັດເພື່ອບໍ່ມີກິເລດແລ້ວ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ອະຣະນະວິພັງຄະສູດທີ ໘ ຈົບ**

# ໑໐. ທາດວິພັງຄະສູດ

## ວ່າດ້ວຍການຈຳແນກທາດ

[໓໔໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວັ້ນມະຄົດ ເຖິງນະຄອນຣາດຊະຄືແລ້ວ ສະເດັດເຂົ້າໄປຫານາຍຊ່າງໝໍ້ຊື່ພັກຄະວະຮອດບ່ອນຢູ່ ແລ້ວໄດ້ຕັດວ່າ "ພັກຄະວະ ຖ້າທ່ານບໍ່ໜັກໃຈ ເຮົາຂໍພັກໃນສາລານີ້ຈັກຄືນໜຶ່ງ"

ນາຍພັກຄະວະຂາບທູນວ່າ "ຂ້າແດ່ ທ່ານຜູ້ຈະເລີນ ຂ້າພະເຈົ້າບໍ່ໜັກໃຈເລີຍ ແຕ່ໃນສາລານີ້ ມີນັກບວດເຂົ້າໄປພັກຢູ່ກ່ອນແລ້ວ ຖ້ານັກບວດອົງນັ້ນອະນຸຍາດ ກໍຂໍເຊີນທ່ານພັກຕາມສະບາຍເທີ້ນ"

ກໍສະໄໝນັ້ນແລ ກຸນລະບຸດຊື່ປຸກກຸສາຕິ ອອກຈາກເຮືອນບວດເປັນບັນພະຊິດດ້ວຍສັດທາ ອຸທິດສະເພາະພຣະຜູ້ມີພຣະພາກເຈົ້າ ປຸກກຸສາຕິກຸນລະບຸດນັ້ນ ເຂົ້າໄປພັກຢູ່ໃນສາລາຂອງນາຍຊ່າງໝໍ້ນັ້ນກ່ອນແລ້ວ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ສະເດັດເຂົ້າໄປຫາທ່ານປຸກກຸສາຕິຮອດບ່ອນຢູ່ແລ້ວໄດ້ຕັດວ່າ "ພິກຂຸ ຖ້າທ່ານບໍ່ໜັກໃຈ ເຮົາຂໍພັກໃນສາລານີ້ນຳຈັກຄືນໜຶ່ງ"

ທ່ານປຸກກຸສາຕິຕອບວ່າ "ທ່ານຜູ້ມີອາຍຸ ສາລາຂອງນາຍຊ່າງໝໍ້ນີ້ກວ້າງຂວາງ ເຊີນທ່ານພັກຕາມສະບາຍເທີ້ນ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປສູ່ສາລາຂອງນາຍຊ່າງໝໍ້ ຊົງປູລາດສັນຖັດຫຍ້າສ່ວນຂ້າງໜຶ່ງ ແລ້ວປະທັບນັ່ງຂັດສະມາທິ ຕັ້ງພຣະວໍຣະກາຍກົງ ດຳລົງພຣະສະຕິ

ໄວ້ສະເພາະໜ້າ ພຣະອົງປະທັບນັ່ງຈົນລ່ວງເລີຍຣາຕີໄປຫຼາຍ ແມ່ນທ່ານປຸກກຸສາຕິກໍນັ່ງຈົນລ່ວງເລີຍຣາຕີໄປຫຼາຍຄືກັນ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງດຳຣິວ່າ "ກຸນລະບຸດນີ້ປະພຶດໜ້າເຫຼື້ອມໃສແທ້ນໍ ຖ້າຈັ່ງໃດແລ້ວ ເຮົາຄວນຈະຖາມເບິ່ງ" ຈຶ່ງຕັດຖາມທ່ານປຸກກຸສາຕິວ່າ "ພິກຂຸ ທ່ານບວດອຸທິດໃຜ ໃຜເປັນສາດສະດາຂອງທ່ານ ຫຼື ທ່ານຖືກໃຈທຳຂອງຜູ້ໃດ?"

ທ່ານປຸກກຸສາຕິຕອບວ່າ "ທ່ານຜູ້ມີອາຍຸ ມີພຣະສະມະນະໂຄດົມ ຜູ້ສາກະຍະບຸດສະເດັດອອກຈາກສາກະຍະຣາດຊະຕະກູນ ຊົງບວດແລ້ວ ກໍພຣະສະມະນະໂຄດົມຜູ້ຈະເລີນພຣະອົງນັ້ນ ມີພຣະກິດຕິສັບອັນງາມຊ່າລືໄປແນວນີ້ວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ຂ້າພະເຈົ້າບວດອຸທິດພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນສາດສະດາຂອງຂ້າພະເຈົ້າ ແລະຂ້າພະເຈົ້າພໍໃຈທຳຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ"

"ພິກຂຸ ກໍບັດນີ້ ພຣະຜູ້ມີພຣະພາກອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນປະທັບຢູ່ໃສ"

"ທ່ານຜູ້ມີອາຍຸ ບັດນີ້ພຣະຜູ້ມີພຣະພາກອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນປະທັບຢູ່ທີ່ນະຄອນສາວັດຖີ ໃນອຸດຕະຣະຊົນນະບົດ"

"ແລ້ວທ່ານເຄີຍເຫັນພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນແດ່ບໍ? ແລະ ເມື່ອທ່ານເຫັນແລ້ວຈະຮູ້ຈັກພຣະອົງບໍ?"

"ທ່ານຜູ້ມີອາຍຸ ຂ້າພະເຈົ້າບໍ່ເຄີຍເຫັນພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເລີຍ ແລະເມື່ອເຫັນແລ້ວກໍບໍ່ຮູ້ຈັກພຣະອົງດອກ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງດຳຣິວ່າ "ກຸນລະບຸດນີ້ບວດອຸທິດເຮົາ ຖ້າຈັ່ງຊັ້ນແລ້ວ ເຮົາເພິ່ງສະແດງທຳແກ່ເຂົາ" ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກທ່ານປຸກກຸສາຕິມາດ້ວຍຕັດວ່າ "ພິກຂຸ ເຮົາຈັກສະແດງທຳແກ່ທ່ານ ທ່ານຈົ່ງຟັງທຳນັ້ນ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ເມື່ອທ່ານປຸກກຸສາຕິທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

[໓໔໓] "ພິກຂຸ ບຸຣຸດນີ້ມີທາດ ໖ ມີຜັດສາຍະຕະນະ (ແດນເກີດແຫ່ງຜັດສະ) ໖ ມີມະໂນວິຈານ (ຄວາມນຶກໜ່ວງທາງໃຈ) ໑໘ ມີອະທິຖານທຳ (ທຳທີ່ຄວນຕັ້ງໄວ້ໃນໃຈ) ໔ ເມື່ອຄວາມກຳນົດໝາຍ ຊຶມຊາບບໍ່ເຖິງບຸຣຸດຜູ້ກົງຢູ່ໃນອະທິຖານທຳ ບັນດິດຈຶ່ງຮຽກບຸຣຸດນັ້ນວ່າ "ມຸນີຜູ້ສະງົບແລ້ວ" ບຸຣຸດບໍ່ເພິ່ງຜະໝາດປັນຍາ[໒] ເພິ່ງຕາມຖືຮັກສາສັດຈະ[໓] ເພິ່ງເພີ່ມພູນຈາຄະ[໔] ເພິ່ງສຶກສາແຕ່ທາງສະງົບທໍ່ນັ້ນ" ນີ້ເປັນອຸດເທດແຫ່ງທາດວິພັງ ໖ ປະການ

[໓໔໔] ເຮົາກ່າວຄຳນີ້ໄວ້ວ່າ "ພິກຂຸ ບຸຣຸດນີ້ມີທາດ ໖ ປະການ" ຍ້ອນອາໄສເຫດອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸ ທາດ ໖ ປະການ ນີ້ ຄື

| | |
|---|---|
| ໑. ປະຖະວີທາດ (ທາດດິນ) | ໒. ອາໂປທາດ (ທາດນ້ຳ) |
| ໓. ເຕໂຊທາດ (ທາດໄຟ) | ໔. ວາໂຍທາດ (ທາດລົມ) |
| ໕. ອາກາສະທາດ (ທາດຄືອາກາດ) | ໖. ວິນຍານທາດ (ທາດຄືວິນຍານ) |

ຄຳທີ່ເຮົາກ່າວໄວ້ວ່າ "ພິກຂຸ ບຸຣຸດນີ້ມີທາດ ໖ ປະການ" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

[໓໔໕] ເຮົາກ່າວຄຳນີ້ໄວ້ວ່າ "ພິກຂຸ ບຸຣຸດນີ້ມີຜັດສາຍະຕະນະ ໖ ປະການ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ຄື

| | |
|---|---|
| ໑. ຜັດສາຍະຕະນະຄືຈັກຂຸ | ໒. ຜັດສາຍະຕະນະຄືໂສຕະ |
| ໓. ຜັດສາຍະຕະນະຄືຄານະ | ໔. ຜັດສາຍະຕະນະຄືຊິວຫາ |
| ໕. ຜັດສາຍະຕະນະຄືກາຍ | ໖. ຜັດສາຍະຕະນະຄືມະໂນ |

ຄຳທີ່ເຮົາກ່າວໄວ້ວ່າ "ພິກຂຸ ບຸຣຸດນີ້ມີຜັດສາຍະຕະນະ ໖ ປະການ" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

[໓໔໖] ເຮົາກ່າວຄຳນີ້ໄວ້ວ່າ "ພິກຂຸ ບຸຣຸດນີ້ມີມະໂນປະວິຈານ ໑໘" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ຄື ບຸກຄົນເຫັນຮູບທາງຕາແລ້ວ ຍ່ອມນຶກໜ່ວງຮູບອັນເປັນທີ່ຕັ້ງແຫ່ງໂສມະນັດ ຍ່ອມນຶກໜ່ວງຮູບອັນເປັນທີ່ຕັ້ງແຫ່ງໂທມະນັດ ຍ່ອມນຶກໜ່ວງຮູບອັນເປັນທີ່ຕັ້ງແຫ່ງອຸເປກຂາ

ຟັງສຽງທາງຫູແລ້ວ ຯລຯ

ດົມກິ່ນທາງດັງແລ້ວ ຯລຯ

ຊີມຣົດທາງລີ້ນແລ້ວ ຯລຯ

ຖືກຕ້ອງໂຜດຖັບພະທາງກາຍແລ້ວ ຯລຯ

ຮູ້ແຈ້ງທຳມາຣົມທາງໃຈແລ້ວ ຍ່ອມນຶກໜ່ວງທຳມາຣົມອັນເປັນທີ່ຕັ້ງແຫ່ງໂສມະນັດ ຍ່ອມນຶກໜ່ວງທຳມາຣົມອັນເປັນທີ່ຕັ້ງແຫ່ງໂທມະນັດ ຍ່ອມນຶກໜ່ວງທຳມາຣົມອັນເປັນທີ່ຕັ້ງແຫ່ງອຸເປກຂາ ຄວາມນຶກໜ່ວງໂສມະນັດ ໖ ຄວາມນຶກໜ່ວງໂທມະນັດ ໖ ຄວາມນຶກໜ່ວງອຸເປກຂາ ໖ ຍ່ອມມີດ້ວຍປະການແນວນີ້

ຄຳທີ່ເຮົາກ່າວໄວ້ວ່າ "ພິກຂຸ ບຸຣຸດນີ້ມີມະໂນປະວິຈານ ໑໘" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

[໓໔໗] ເຮົາກ່າວຄຳນີ້ໄວ້ວ່າ "ພິກຂຸ ບຸຣຸດນີ້ມີອະທິຖານທຳ ໔ ປະການ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ຄື

໑. ອະທິຖານທຳຄືປັນຍາ
໒. ອະທິຖານທຳຄືສັດຈະ
໓. ອະທິຖານທຳຄືຈາຄະ
໔. ອະທິຖານທຳຄືອຸປະສະມະ

ຄຳທີ່ເຮົາກ່າວໄວ້ວ່າ "ພິກຂຸ ບຸຣຸດນີ້ມີອະທິຖານທຳ ໔ ປະການ" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

## ທາດ ໖ ປະການ

[໓໔໘] ເຮົາກ່າວຄຳນີ້ໄວ້ວ່າ "ບຸຣຸດບໍ່ເພິ່ງຜະໝາດປັນຍາ ເພິ່ງຕາມຖືຮັກສາສັດຈະ ເພິ່ງເພີ່ມພູນຈາຄະ ເພິ່ງສຶກສາແຕ່ທາງສະງົບທໍ່ນັ້ນ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ບຸຣຸດບໍ່ເພິ່ງຜະໝາດປັນຍາ ເປັນແນວໃດ?

ຄື ທາດ ໖ ປະການນີ້ ໄດ້ແກ່

໑. ປະຖະວີທາດ
໒. ອາໂປທາດ
໓. ເຕໂຊທາດ
໔. ວາໂຍທາດ
໕. ອາກາສະທາດ
໖. ວິນຍານທາດ

[໓໔໙] ປະຖະວີທາດ ເປັນແນວໃດ?

ຄື ປະຖະວີທາດພາຍໃນກໍມີ ປະຖະວີທາດພາຍນອກກໍມີ

ປະຖະວີທາດພາຍໃນ ເປັນແນວໃດ?

ຄື ອຸປາທິນນະກະຣູບ໑ພາຍໃນບ່ອນເປັນຂອງສະເພາະຕົນ ເປັນຂອງແຂ້ນແຂງ ເປັນຂອງຫຍາບ ໄດ້ແກ່ ຜົມ ຂົນ ເລັບ ແຂ້ວ ໜັງ ຊີ້ນ ເອັນ ກະດູກ ເຍື່ອໃນກະດູກ ໄຕ ຫົວໃຈ ຕັບ ພັງຜືດ ມ້າມ ປອດ ໄສ້ໃຫຍ່ ໄສ້ນ້ອຍ ອາຫານໃໝ່ ອາຫານເກົ່າ ຫຼື ອຸປາທິນນະກະຣູບພາຍໃນອື່ນໃດທີ່ເປັນຂອງສະເພາະຕົນ ເປັນຂອງແຂ້ນແຂງ ເປັນຂອງຫຍາບ ນີ້ຮຽກວ່າປະຖະວີທາດພາຍໃນ

ປະຖະວີທາດພາຍໃນ ແລະປະຖະວີທາດພາຍນອກນີ້ ກໍເປັນປະຖະວີທາດນັ້ນເອງ ບັນດິດຄວນເຫັນປະຖະວີທາດນັ້ນ ຕາມຄວາມເປັນຈິງ ດ້ວຍປັນຍາອັນຖືກຕ້ອງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ?" ເມື່ອເຫັນປະຖະວີທາດນັ້ນຕາມຄວາມເປັນຈິງ ດ້ວຍປັນຍາອັນຖືກຕ້ອງແນວນີ້ແລ້ວ ຍ່ອມເບື່ອໜ່າຍໃນປະຖະວີທາດ ແລະເຮັດຈິດໃຫ້ຄາຍກໍາໜັດຈາກປະຖະວີທາດ

[໓໕໐] ອາໂປທາດ ເປັນແນວໃດ?

ຄື ອາໂປທາດພາຍໃນກໍມີ ອາໂປທາດພາຍນອກກໍມີ

ອາໂປທາດພາຍໃນ ເປັນແນວໃດ?

ຄື ອຸປາທິນນະກະຣູບພາຍໃນບ່ອນເປັນຂອງສະເພາະຕົນ ເປັນຂອງເອີບອາບ ມີຄວາມເອີບອາບ ໄດ້ແກ່ ບີ ຂີ້ກະເທີ່ ໜອງ ເລືອດ ເຫື່ອ ນໍ້າຕາ ມັນຂຸ້ນ ນໍ້າມັນ ນໍ້າລາຍ ນໍ້າມູກ ໄຂຂໍ້ ມູດ ຫຼືອຸປາທິນນະກະຣູບພາຍໃນອື່ນໃດ ທີ່ເປັນຂອງສະເພາະຕົນ ເປັນຂອງເອີບອາບ ມີຄວາມເອີບອາບ ນີ້ຮຽກວ່າອາໂປທາດພາຍໃນ

ອາໂປທາດພາຍໃນແລະອາໂປທາດພາຍນອກນີ້ ກໍເປັນອາໂປທາດນັ້ນເອງ ບັນດິດເພິ່ງເຫັນອາໂປທາດນັ້ນຕາມຄວາມເປັນຈິງ ດ້ວຍປັນຍາອັນຖືກຕ້ອງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ?" ເມື່ອເຫັນອາໂປທາດນັ້ນຕາມຄວາມເປັນຈິງ ດ້ວຍປັນ ຍາອັນຖືກຕ້ອງແນວນີ້ແລ້ວ ຍ່ອມເບື່ອໜ່າຍໃນອາໂປທາດ ແລະ ເຮັດຈິດໃຫ້ຄາຍກໍາໜັດຈາກອາໂປທາດ

[໓໕໑] ເຕໂຊທາດ ເປັນແນວໃດ?

ຄື ເຕໂຊທາດພາຍໃນກໍມີ ເຕໂຊທາດພາຍນອກກໍມີ

ເຕໂຊທາດພາຍໃນ ເປັນແນວໃດ?

ຄື ອຸປາທິນນະກະຣູບພາຍໃນບ່ອນເປັນຂອງສະເພາະຕົນ ເປັນຂອງຮ້ອນຮົນ ມີຄວາມຮ້ອນຮົນ ໄດ້ແກ່ ທຳມະຊາດທີ່ເປັນເຄື່ອງເຮັດຮ່າງກາຍໃຫ້ອົບອຸ່ນ ທຳມະຊາດທີ່ເປັນເຄື່ອງເຮັດຮ່າງກາຍໃຫ້ຊຸດໂຊມ ທຳມະຊາດທີ່ເປັນເຄື່ອງເຮັດຮ່າງກາຍໃຫ້ຮ້ອນຮົນ ທຳມະຊາດທີ່ເປັນເຄື່ອງຍ່ອຍສິ່ງທີ່ກິນແລ້ວ ດື່ມແລ້ວ ຫຍ້ຳແລ້ວ ແລະ ຊີມຣົດແລ້ວ ຫຼື ອຸປາທິນນະກະຣູບພາຍໃນອື່ນໃດ ທີ່ເປັນຂອງສະເພາະຕົນ ເປັນຂອງຮ້ອນຮົນ ມີຄວາມຮ້ອນຮົນ ນີ້ຮຽກວ່າເຕໂຊທາດພາຍໃນ

ເຕໂຊທາດພາຍໃນແລະເຕໂຊທາດພາຍນອກນີ້ ກໍເປັນເຕໂຊທາດນັ້ນເອງ ບັນດິດເພິ່ງເຫັນເຕໂຊທາດນັ້ນຕາມຄວາມເປັນຈິງ ດ້ວຍປັນຍາອັນຖືກຕ້ອງແນວນີ້ວ່າ “ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ?” ເມື່ອເຫັນເຕໂຊທາດນັ້ນຕາມຄວາມເປັນຈິງ ດ້ວຍປັນຍາອັນຖືກຕ້ອງແນວນີ້ແລ້ວ ຍ່ອມເບື່ອໜ່າຍໃນເຕໂຊທາດ ແລະ ເຮັດຈິດໃຫ້ຄາຍກຳໜັດຈາກເຕໂຊທາດ

[໑໘໔] ວາໂຍທາດ ເປັນແນວໃດ?

ຄື ວາໂຍທາດພາຍໃນກໍມີ ວາໂຍທາດພາຍນອກກໍມີ

ວາໂຍທາດພາຍໃນ ເປັນແນວໃດ?

ຄື ອຸປາທິນນະກະຣູບພາຍໃນບ່ອນເປັນຂອງສະເພາະຕົນ ເປັນຂອງພັດໄປມາ ມີຄວາມພັດໄປມາ ໄດ້ແກ່ ລົມທີ່ພັດຂຶ້ນເບື້ອງເທິງ ລົມທີ່ພັດລົງເບື້ອງຕ່ຳ ລົມໃນທ້ອງ ລົມໃນລຳໄສ້ ລົມທີ່ແລ່ນໄປຕາມອະໄວຍະວະນ້ອຍໃຫຍ່ ລົມຫັນໃຈເຂົ້າ ລົມຫັນໃຈອອກ ຫຼື ອຸປາທິນນະກະຣູບພາຍໃນອື່ນໃດ ທີ່ເປັນຂອງສະເພາະຕົນ ເປັນຂອງພັດໄປມາ ມີຄວາມພັດໄປມາ ນີ້ຮຽກວ່າວາໂຍທາດພາຍໃນ

ວາໂຍທາດພາຍໃນແລະວາໂຍທາດພາຍນອກນີ້ ກໍເປັນວາໂຍທາດນັ້ນເອງ ບັນດິດເພິ່ງເຫັນວາໂຍທາດນັ້ນຕາມຄວາມເປັນຈິງ ດ້ວຍປັນຍາອັນຖືກຕ້ອງແນວນີ້ວ່າ “ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ?” ເມື່ອເຫັນວາໂຍທາດນັ້ນຕາມຄວາມເປັນຈິງ ດ້ວຍປັນ ຍາອັນຖືກຕ້ອງແນວນີ້ແລ້ວ ຍ່ອມເບື່ອໜ່າຍໃນວາໂຍທາດ ແລະ ເຮັດຈິດໃຫ້ຄາຍກຳໜັດຈາກວາໂຍທາດ[๑]

[໑໘໑] ອາກາສະທາດ ເປັນແນວໃດ?

ຄື ອາກາສະທາດພາຍໃນກໍມີ ອາກາສະທາດພາຍນອກກໍມີ

ອາກາສະທາດພາຍໃນ ເປັນແນວໃດ?

ຄື ອຸປາທິນນະກະຣູບພາຍໃນບ່ອນເປັນຂອງສະເພາະຕົນ ເປັນສະພາວະວ່າງເປົ່າ ມີຄວາມວ່າງເປົ່າ ໄດ້ແກ່ ຮູຫູ ຮູດັງ ປ່ອງປາກ ປ່ອງສຳລັບກືນຂອງກິນ ຂອງດື່ມ ຂອງຫຍ້ຳ ຂອງຊີມຣົດ ປ່ອງທີ່ພັກຢູ່ແຫ່ງຂອງກິນ ຂອງດື່ມ ຂອງຫຍ້ຳ ຂອງຊີມ ແລະ ປ່ອງສຳລັບຂອງກິນ ຂອງດື່ມ ຂອງຫຍ້ຳ ຂອງຊີມ ໄຫຼລົງເບື້ອງຕ່ຳ ຫຼືອຸປາທິນນະກະຣູບ ພາຍໃນອື່ນໃດທີ່ເປັນຂອງສະເພາະຕົນ ເປັນສະພາວະວ່າງເປົ່າ ມີຄວາມວ່າງເປົ່າ ນີ້ຮຽກວ່າອາກາສທາດພາຍໃນ໑

ອາກາສະທາດພາຍໃນແລະອາກາສະທາດພາຍນອກນີ້ ກໍເປັນອາກາສະທາດນັ້ນເອງ ບັນດິດ ເພິ່ງເຫັນອາກາສະທາດນັ້ນຕາມຄວາມເປັນຈິງ ດ້ວຍປັນຍາອັນຖືກຕ້ອງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ?" ເມື່ອເຫັນອາກາສະທາດນັ້ນຕາມຄວາມເປັນຈິງ ດ້ວຍປັນຍາອັນຖືກຕ້ອງແນວນີ້ແລ້ວ ຍ່ອມເບື່ອໜ່າຍໃນອາກາສທາດ ແລະເຮັດຈິດໃຫ້ຄາຍຄວາມກຳໜັດຈາກອາກາສທາດ

[໓໕໔] ບັດນັ້ນ ວິນຍານອັນບໍລິສຸດຜຸດຜ່ອງ ເຫຼືອຢູ່ ບຸກຄົນຍ່ອມຮູ້ເລື້ອງອັນໃດ ໆ ໄດ້ດ້ວຍວິນຍານນັ້ນ ຄືຮູ້ວ່າ "ສຸກ" ແດ່ ຮູ້ວ່າ "ທຸກ" ແດ່ ຮູ້ວ່າ "ອະທຸກຂະມະສຸຂະ" ແດ່ ຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງສຸກຂະເວທະນາ ສຸກຂະເວທະນາຈຶ່ງເກີດ ບຸກຄົນນັ້ນເມື່ອສະເຫວີຍສຸກຂະເວທະນາ ຍ່ອມຮູ້ແຈ້ງວ່າ "ເຮົາສະເຫວີຍສຸກຂະເວທະນາຢູ່" ຮູ້ແຈ້ງວ່າ "ຍ້ອນຜັດສະອັນເປັນບ່ອນຕັ້ງແຫ່ງສຸກຂະເວທະນານັ້ນ ໆ ເອງດັບ ສຸກຂະເວທະນາທີ່ເກີດຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງສຸກຂະເວທະນາ ທີ່ສະເຫວີຍຢູ່ອັນເກີດຈາກຜັດສະນັ້ນກໍດັບຄືສະງົບໄປ"

[໓໕໕] ຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງທຸກຂະເວທະນາ ທຸກຂະເວທະນາຈຶ່ງເກີດ ບຸກຄົນນັ້ນເມື່ອສະເຫວີຍທຸກຂະເວທະນາ ຍ່ອມຮູ້ແຈ້ງວ່າ "ເຮົາສະເຫວີຍທຸກຂະເວທະນາຢູ່" ຮູ້ແຈ້ງວ່າ "ຍ້ອນຜັດສະອັນເປັນບ່ອນຕັ້ງແຫ່ງທຸກຂະເວທະນານັ້ນ ໆ ເອງດັບ ທຸກຂະເວທະນາທີ່ເກີດຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງທຸກຂະເວທະນາ ທີ່ສະເຫວີຍຢູ່ອັນເກີດຈາກຜັດສະນັ້ນກໍດັບຄືສະງົບໄປ"

[໓໕໖] ຍ້ອນອາໄສຜັດສະອັນເປັນທີ່ຕັ້ງແຫ່ງອະທຸກຂະມະສຸກຂະເວທະນາ ອະທຸກຂະມະສຸກຂະເວທະນາ ຈຶ່ງເກີດ ບຸກຄົນນັ້ນ ເມື່ອສະເຫວີຍອະທຸກຂະມະສຸກຂະເວທະນາ ຍ່ອມຮູ້ແຈ້ງວ່າ "ເຮົາສະເຫວີຍອະທຸກຂະມະສຸກຂະເວທະນາຢູ່" ຮູ້ແຈ້ງວ່າ "ຍ້ອນຜັດສະອັນເປັນທີ່ຕັ້ງແຫ່ງອະທຸກຂະມະສຸກຂະເວທະນານັ້ນ ໆ ເອງດັບ ອະທຸກຂະມະສຸກຂະເວທະນາທີ່ເກີດຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງອະທຸກຂະມະສຸກຂະເວທະນາ ທີ່ສະເຫວີຍຢູ່ອັນເກີດຈາກ

ຜັດສະນັ້ນກໍດັບຄືສະງົບໄປ”

[໓໕໗] ພິກຂຸ ປຽບຄືໄມ້ ໘ ອັນ ສຽບສີກັນ ຈຶ່ງເກີດຄວາມຮ້ອນ ໄຟລຸກຂຶ້ນ ຍ້ອນແຍກໄມ້ທັງສອງນັ້ນອອກຈາກກັນ ຄວາມຮ້ອນທີ່ເກີດຈາກການສຽບສີນັ້ນ ຈຶ່ງດັບລະງັບໄປ ແມ່ນສັນໃດ ບຸກຄົນກໍຄືກັນສັນນັ້ນ ຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງສຸກຂະເວທະນາ ສຸກຂະເວທະນາຈຶ່ງເກີດ ບຸກຄົນນັ້ນເມື່ອສະເຫວີຍສຸກຂະເວທະນາ ຍ່ອມຮູ້ແຈ້ງວ່າ “ເຮົາສະເຫວີຍສຸກຂະເວທະນາຢູ່” ຮູ້ແຈ້ງວ່າ “ຍ້ອນຜັດສະອັນເປັນບ່ອນຕັ້ງແຫ່ງສຸກຂະເວທະນານັ້ນ ໆ ເອງດັບສຸກຂະເວທະນາ ທີ່ເກີດຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງສຸກຂະເວທະນາ ທີ່ສະເຫວີຍຢູ່ອັນເກີດຈາກຜັດສະນັ້ນກໍດັບຄືສະງົບໄປ”

[໓໕໘] ຍ້ອນອາໄສຜັດສະອັນເປັນທີ່ຕັ້ງແຫ່ງທຸກຂະເວທະນາ ທຸກຂະເວທະນາຈຶ່ງເກີດບຸກຄົນນັ້ນເມື່ອສະເຫວີຍທຸກຂະເວທະນາ ຍ່ອມຮູ້ແຈ້ງວ່າ “ເຮົາສະເຫວີຍທຸກຂະເວທະນາຢູ່” ຮູ້ແຈ້ງວ່າ “ຍ້ອນຜັດສະອັນເປັນທີ່ຕັ້ງແຫ່ງທຸກຂະເວທະນານັ້ນ ໆ ເອງດັບ ທຸກຂະເວທະນາທີ່ເກີດຍ້ອນອາໄສຜັດສະອັນເປັນທີ່ຕັ້ງແຫ່ງທຸກຂະເວທະນາ ທີ່ສະເຫວີຍຢູ່ອັນເກີດຈາກຜັດສະນັ້ນກໍດັບຄືສະງົບໄປ”

[໓໕໙] ຍ້ອນອາໄສຜັດສະອັນເປັນທີ່ຕັ້ງອະທຸກຂະມະສຸກຂະເວທະນາ ອະທຸກຂະມະສຸກຂະເວທະນາຈຶ່ງເກີດ ບຸກຄົນນັ້ນເມື່ອສະເຫວີຍອະທຸກຂະມະສຸກຂະເວທະນາ ຍ່ອມຮູ້ແຈ້ງວ່າ “ເຮົາສະເຫວີຍອະທຸກຂະມະສຸກຂະເວທະນາຢູ່” ຮູ້ແຈ້ງວ່າ “ຍ້ອນຜັດສະອັນເປັນທີ່ຕັ້ງແຫ່ງອະທຸກຂະມະສຸກຂະເວທະນານັ້ນ ໆ ເອງດັບ ອະທຸກຂົມສຸກຂະເວທະນາທີ່ເກີດຍ້ອນອາໄສຜັດສະອັນເປັນທີ່ຕັ້ງແຫ່ງອະທຸກຂະມະສຸກຂະເວທະນາ ທີ່ສະເຫວີຍຢູ່ອັນເກີດຈາກຜັດສະນັ້ນກໍດັບຄືສະງົບໄປ”

[໓໖໐] ບັດນັ້ນ ອຸເປກຂາອັນບໍລິສຸດຜຸດຜ່ອງ ອ່ອນ ເໝາະແກ່ການໃຊ້ງານ ແລະຜ່ອງໃສ ເຫຼືອຢູ່ ປຽບຄື ຊ່າງຄຳຫຼືລູກມືຂອງຊ່າງຄຳຜູ້ຊ່ຽວຊານ ກະກຽມເບົ້າແລ້ວສຸມປາກເບົ້າ ເອົາຄີມຄີບຄຳໃສ່ລົງທີ່ປາກເບົ້າ ແລ້ວສູບລົມຕາມສົມຄວນແກ່ເວລາ ເອົານ້ຳປະພົມຕາມສົມຄວນແກ່ເວລາ ເພ່ງເບິ່ງຕາມສົມຄວນແກ່ເວລາ ຄຳນັ້ນເປັນຄຳທີ່ຖືກໄລ່ຂີ້ໝົດແລ້ວ ຈຶ່ງເປັນຄຳອ່ອນເໝາະແກ່ການໃຊ້ງານ ຜຸດຜ່ອງ ແລະຊ່າງຄຳຫຼືລູກມືຂອງຊ່າງຄຳ ມຸ້ງໝາຍຈະເຮັດເຄື່ອງປະດັບຊະນິດໃດ ໆ ຄື ແຜ່ນຄຳ ຕຸ້ມຫູ ສາຍສ້ອຍ ຫຼື ມາໄລຄຳ ຄຳນັ້ນຍ່ອມອຳນວຍປະໂຫຍດໃຫ້ເຂົາໄດ້ ແມ່ນສັນໃດ? ອຸເປກຂາອື່ນກໍຄືກັນສັນນັ້ນ ເປັນອຸເປກຂາບໍລິສຸດຜຸດຜ່ອງ ອ່ອນ ເໝາະແກ່ການໃຊ້ງານ ແລະ ຜ່ອງໃສເຫຼືອຢູ່

[໓໖໑] ບຸກຄົນນັ້ນຮູ້ແຈ້ງແນວນີ້ວ່າ “ຖ້າເຮົານ້ອມອຸເປກຂາອັນບໍລິສຸດຜຸດຜ່ອງແນວນີ້

ເຂົ້າໄປສູ່ອາກາສານັນຈາຍະຕະນະຊານ ແລະ ອົບຮົມຈິດໃຫ້ມີທຳສົມຄວນ[໑]ແກ່ທຳນັ້ນ[໒] ເມື່ອເປັນເຊັ່ນນັ້ນ ອຸເປກຂາຂອງເຮົານີ້ກໍຈະເປັນອຸເປກຂາທີ່ອາໄສອາກາສານັນຈາຍະຕະນະຊານນັ້ນ ຍຶດອາກາສານັນຈາຍະຕະນະຊານນັ້ນ ຄົງຢູ່ຕະຫຼອດການລະນານ

ຖ້າເຮົານ້ອມອຸເປກຂາອັນບໍລິສຸດຜຸດຜ່ອງແນວນີ້ ເຂົ້າໄປສູ່ວິນຍານັນຈາຍະຕະນະຊານ ແລະອົບຮົມຈິດໃຫ້ມີທຳສົມຄວນແກ່ຊານນັ້ນ ເມື່ອເປັນເຊັ່ນນັ້ນ ອຸເປກຂາຂອງເຮົານີ້ກໍຈະເປັນອຸເປກຂາທີ່ອາໄສວິນຍານັນຈາຍະຕະນະຊານນັ້ນ ຍຶດວິນຍານນັນຈາຍະຕະນະຊານນັ້ນ ຄົງຢູ່ຕະຫຼອດການລະນານ

ຖ້າເຮົານ້ອມອຸເປກຂາອັນບໍລິສຸດຜຸດຜ່ອງແນວນີ້ ເຂົ້າໄປສູ່ອາກິນຈັນຍາຍະຕະນະຊານ ແລະອົບຮົມຈິດໃຫ້ມີທຳສົມຄວນແກ່ຊານນັ້ນ ເມື່ອເປັນເຊັ່ນນັ້ນ ອຸເປກຂາຂອງເຮົານີ້ກໍຈະເປັນອຸເປກຂາບ່ອນອາໄສອາກິນຈັນຍາຍະຕະນະຊານນັ້ນ ຍຶດອາກິນຈັນຍາຍະຕະນະຊານນັ້ນ ຄົງຢູ່ຕະຫຼອດການລະນານ

ຖ້າເຮົານ້ອມອຸເປກຂາອັນບໍລິສຸດຜຸດຜ່ອງແນວນີ້ ເຂົ້າໄປສູ່ເນວະສັນຍານາສັນຍາຍະຕະນະຊານ ແລະ ອົບຮົມຈິດໃຫ້ມີທຳສົມຄວນແກ່ຊານນັ້ນ ເມື່ອເປັນເຊັ່ນນັ້ນ ອຸເປກຂາຂອງເຮົານີ້ກໍຈະເປັນອຸເປກຂາບ່ອນອາໄສເນວະສັນຍານາສັນຍາຍະຕະນະຊານນັ້ນ ຍຶດເນວະສັນຍານາສັນຍາຍະຕະນະຊານນັ້ນ ຄົງຢູ່ຕະຫຼອດການລະນານ

[໓໗໘] ພິກຂຸນັ້ນຮູ້ແຈ້ງແນວນີ້ວ່າ "ຖ້າເຮົານ້ອມອຸເປກຂາອັນບໍລິສຸດຜຸດຜ່ອງແນວນີ້ ເຂົ້າໄປສູ່ອາກາສານັນຈາຍະຕະນະຊານ ແລະ ອົບຮົມຈິດໃຫ້ມີທຳສົມຄວນແກ່ຊານນັ້ນ ຈິດນີ້ກໍຈະເປັນຈິດທີ່ຖືກປັດໄຈປຸງແຕ່ງແລ້ວ

ຖ້າເຮົານ້ອມອຸເປກຂາອັນບໍລິສຸດຜຸດຜ່ອງແນວນີ້ ເຂົ້າໄປສູ່ວິນຍານັນຈາຍະຕະນະຊານ ແລະອົບຮົມຈິດໃຫ້ມີທຳສົມຄວນແກ່ຊານນັ້ນ ຈິດນີ້ກໍຈະເປັນຈິດທີ່ຖືກປັດໄຈປຸງແຕ່ງແລ້ວ

ຖ້າເຮົານ້ອມອຸເປກຂາອັນບໍລິສຸດຜຸດຜ່ອງແນວນີ້ ເຂົ້າໄປສູ່ອາກິນຈັນຍາຍະຕະນະຊານ ແລະອົບຮົມຈິດໃຫ້ມີທຳສົມຄວນແກ່ຊານນັ້ນ ຈິດນີ້ກໍເປັນຈິດທີ່ຖືກປັດໄຈປຸງແຕ່ງແລ້ວ

ຖ້າເຮົານ້ອມອຸເປກຂາອັນບໍລິສຸດຜຸດຜ່ອງແນວນີ້ ເຂົ້າໄປສູ່ເນວະສັນຍານາສັນຍາຍະຕະນະຊານ ແລະ ອົບຮົມຈິດໃຫ້ມີທຳສົມຄວນແກ່ຊານນັ້ນ ຈິດນີ້ກໍຈະເປັນຈິດທີ່ຖືກປັດໄຈປຸງແຕ່ງແລ້ວ

ພິກຂຸນັ້ນ ຈະບໍ່ປຸງແຕ່ງ ຈະບໍ່ຄິດເຖິງຄວາມຈະເລີນຫຼືຄວາມເສື່ອມເລີຍ ທ່ານເມື່ອບໍ່ປຸງແຕ່ງ ບໍ່ຄິດເຖິງ ຍ່ອມບໍ່ຍຶດໝັ້ນອັນໃດ ໆ ໃນໂລກ ເມື່ອບໍ່ຍຶດໝັ້ນ ຍ່ອມບໍ່ຫວາດຫວັ່ນ ເມື່ອບໍ່

ຫວາດຫວັ່ນ ຍ່ອມດັບກິເລດໄດ້ສະເພາະຕົນທີ່ນັ້ນ ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

[໓໖໓] ຖ້າພິກຂຸນັ້ນສະເຫວີຍສຸກຂະເວທະນາ ຈຶ່ງຮູ້ແຈ້ງວ່າ "ສຸກຂະເວທະນານັ້ນບໍ່ທ່ຽງ" ຮູ້ແຈ້ງວ່າ "ບໍ່ໜ້າໝົກມຸ້ນ" ຮູ້ແຈ້ງວ່າ "ບໍ່ໜ້າເພີດເພີນ"

ຖ້າທ່ານສະເຫວີຍທຸກຂະເວທະນາ ຈຶ່ງຮູ້ແຈ້ງວ່າ "ທຸກຂະເວທະນານັ້ນບໍ່ທ່ຽງ" ຮູ້ແຈ້ງວ່າ "ບໍ່ໜ້າໝົກມຸ້ນ" ຮູ້ແຈ້ງວ່າ "ບໍ່ໜ້າເພີດເພີນ"

ຖ້າທ່ານສະເຫວີຍອະທຸກຂະມະສຸກຂະເວທະນາ ຈຶ່ງຮູ້ແຈ້ງວ່າ "ອະທຸກຂະມະສຸກຂະເວທະນານັ້ນບໍ່ທ່ຽງ" ຮູ້ແຈ້ງວ່າ "ບໍ່ໜ້າໝົກມຸ້ນ" ຮູ້ແຈ້ງວ່າ "ບໍ່ໜ້າເພີດເພີນ"

[໓໖໔] ຖ້າທ່ານສະເຫວີຍສຸກຂະເວທະນາ ຈຶ່ງເປັນຜູ້ປາສະຈາກ (ກິເລດ) ສະເຫວີຍສຸກຂະເວທະນານັ້ນ

ຖ້າທ່ານສະເຫວີຍທຸກຂະເວທະນາ ຈຶ່ງເປັນຜູ້ປາສະຈາກ (ກິເລດ) ສະເຫວີຍທຸກຂະເວທະນານັ້ນ

ຖ້າທ່ານສະເຫວີຍອະທຸກຂະມະສຸກຂະເວທະນາ ຈຶ່ງເປັນຜູ້ປາສະຈາກ (ກິເລດ) ສະເຫວີຍອະທຸກຂະມະສຸກຂະເວທະນານັ້ນ ທ່ານເມື່ອສະເຫວີຍເວທະນາມີກາຍເປັນທີ່ສຸດ ຈຶ່ງຮູ້ແຈ້ງວ່າ "ເຮົາສະເຫວີຍເວທະນາມີກາຍເປັນທີ່ສຸດ" ເມື່ອສະເຫວີຍເວທະນາມີຊີວິດເປັນທີ່ສຸດ ຈຶ່ງຮູ້ແຈ້ງວ່າ "ເຮົາສະເຫວີຍເວທະນາມີຊີວິດເປັນທີ່ສຸດ" ຮູ້ແຈ້ງວ່າ "ຫຼັງຈາກຕາຍໄປເວທະນາທັງປວງບໍ່ໜ້າເພີດເພີນ ຈັກເຢັນໃນໂລກນີ້ຢ່າງແນ່ນອນ"

[໓໖໕] ພິກຂຸ ປຽບຄືຕະກຽງນ້ຳມັນຕິດຢູ່ໄດ້ ຍ້ອນອາໄສນ້ຳມັນແລະໄສ້ ຕະກຽງນ້ຳມັນນັ້ນຍ່ອມໝົດເຊື້ອດັບໄປ ຍ້ອນໝົດນ້ຳມັນແລະໄສ້ ແລະ ຍ້ອນບໍ່ເຕີມນ້ຳມັນແລະໄສ້ໃໝ່ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອສະເຫວີຍເວທະນາມີກາຍເປັນທີ່ສຸດ ຈຶ່ງຮູ້ແຈ້ງວ່າ "ເຮົາສະເຫວີຍເວທະນາມີກາຍເປັນທີ່ສຸດ" ເມື່ອສະເຫວີຍເວທະນາມີຊີວິດເປັນທີ່ສຸດ ຈຶ່ງຮູ້ແຈ້ງວ່າ "ເຮົາສະເຫວີຍເວທະນາມີຊີວິດເປັນທີ່ສຸດ" ຮູ້ແຈ້ງວ່າ "ຫຼັງຈາກຕາຍໄປ ເວທະນາທັງປວງບໍ່ໜ້າເພີດເພີນ ຈັກເຢັນໃນໂລກນີ້ຢ່າງແນ່ນອນ" ຍ້ອນເຫດນັ້ນ ພິກຂຸຜູ້ພຽບພ້ອມແລ້ວແນວນີ້[໒] ຊື່ວ່າເປັນຜູ້ປະກອບດ້ວຍອະທິຖານທຳຄືປັນຍາອັນປະເສີດນີ້ ຍ້ອນວ່າປັນຍາອັນປະເສີດ ປະເສີດນີ້ຄືຄວາມຮູ້ໃນທຳເປັນທີ່ສິ້ນທຸກທັງປວງ[໑]

[໓໖໖] ຄວາມລຸດພົ້ນຂອງພິກຂຸນັ້ນ ເປັນອັນຕັ້ງຢູ່ ບໍ່ກຳເຣີບໃນສັດຈະ ຍ້ອນວ່າສິ່ງໃດມີຄວາມເລີເລືອນເປັນທຳມະດາ ສິ່ງນັ້ນເປັນຂອງຕົວະ ສິ່ງໃດບໍ່ມີຄວາມເລີເລືອນເປັນທຳມະດາ

ສິ່ງນັ້ນເປັນຂອງຈິງຄືນິບພານ ຍ້ອນແນວນັ້ນ ພິກຂຸຜູ້ພຽບພ້ອມແລ້ວແນວນີ້ ຈຶ່ງຊື່ວ່າເປັນຜູ້ປະກອບດ້ວຍອະທິຖານທຳຄື ສັດຈະອັນປະເສີດນີ້ ຍ້ອນສັດຈະນີ້ເປັນບໍຣົມອະຣິຍະສັດຄືນິບພານອັນບໍ່ມີຄວາມເລີເລືອນເປັນທຳມະດາ

[໓໕໑] ອັນໜຶ່ງ ອຸປະທິທັງຫຼາຍ໒ຂອງພິກຂຸຜູ້ບໍ່ຮູ້ແຈ້ງໃນການກ່ອນນັ້ນ ໆ ເອງ ເປັນອັນທ່ານສະມາທານໃຫ້ບໍລິບູນແລ້ວ ທ່ານລະອຸປະທິເຫຼົ່ານັ້ນໄດ້ແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຍ້ອນແນວນັ້ນ ພິກຂຸຜູ້ພຽບພ້ອມແລ້ວແນວນີ້ ຈຶ່ງຊື່ວ່າ ເປັນຜູ້ປະກອບດ້ວຍອະທິຖານທຳຄືຈາຄະອັນປະເສີດນີ້ ຍ້ອນວ່າຈາຄະອັນປະເສີດ ປະເສີດນີ້ ຄືຄວາມສະລະຄືນອຸປະທິທັງປວງ

[໓໕໒] ອັນໜຶ່ງ ອະພິດຊາ ຄື ຄວາມພໍໃຈ ຄວາມກຳໜັດຍິນດີຂອງພິກຂຸຜູ້ບໍ່ຮູ້ແຈ້ງໃນການກ່ອນນັ້ນ ໆ ເອງມີຢູ່ ທ່ານລະອະພິດຊາ ຄື ຄວາມພໍໃຈ ຄວາມກຳໜັດຍິນດີໄດ້ແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີເກີດຂຶ້ນຕໍ່ໄປບໍ່ໄດ້

ຄວາມອາຄາດ ຄື ຄວາມພະຍາບາດ ຄວາມຄິດປະທຸດສະຮ້າຍຂອງພິກຂຸຜູ້ບໍ່ຮູ້ແຈ້ງໃນການກ່ອນນັ້ນ ໆ ເອງມີຢູ່ ທ່ານລະຄວາມອາຄາດ ຄື ຄວາມພະຍາບາດ ຄວາມຄິດປະທຸດສະຮ້າຍນັ້ນໄດ້ແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ອະວິດຊາ ຄື ຄວາມຫຼົງ ງົມງວາຍຂອງພິກຂຸຜູ້ບໍ່ຮູ້ແຈ້ງໃນການກ່ອນນັ້ນ ໆ ເອງມີຢູ່ ທ່ານລະອະພິດຊາ ຄືຄວາມຫຼົງ ງົມງວາຍນັ້ນໄດ້ແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຍ້ອນແນວນັ້ນ ພິກຂຸຜູ້ພຽບພ້ອມແລ້ວແນວນີ້ ຈຶ່ງຊື່ວ່າ ເປັນຜູ້ປະກອບດ້ວຍອະທິຖານທຳ ຄື ອຸປະສະມະອັນປະເສີດນີ້ ຄວາມສະງົບລະງັບຣາຄະ ໂທສະ ໂມຫະ ນີ້ເປັນຄວາມສະງົບລະງັບ ອັນປະເສີດປະເສີດ

ຄຳທີ່ເຮົາກ່າວໄວ້ວ່າ "ບຸຣຸດບໍ່ເພິ່ງຜະໝາດປັນຍາ ເພິ່ງຕາມຖືຮັກສາສັດຈະ ເພິ່ງເພີ່ມພູນຈາຄະ ເພິ່ງສຶກສາແຕ່ທາງສະງົບທໍ່ນັ້ນ" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

[໓໕໓] ເຮົາກ່າວຄຳນີ້ໄວ້ວ່າ "ເມື່ອຄວາມກຳນົດໝາຍ໑ຊຶມຊາບບໍ່ເຖິງບຸຣຸດຜູ້ກົງຢູ່ໃນອະທິຖານທຳ ບັນດິດຈຶ່ງຮຽກບຸຣຸດນັ້ນວ່າ "ມຸນີຜູ້ສະງົບແລ້ວ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸ ຄວາມກຳນົດໝາຍວ່າ "ເຮົາມີ" ຄວາມກຳນົດໝາຍວ່າ "ເຮົາບໍ່ມີ" ຄວາມກຳນົດ

ໝາຍວ່າ "ເຮົາຈັກມີ" ຄວາມກຳນົດໝາຍວ່າ "ເຮົາຈັກບໍ່ມີ" ຄວາມກຳນົດໝາຍວ່າ "ເຮົາຈັກມີຮູບ" ຄວາມກຳນົດໝາຍວ່າ "ເຮົາຈັກບໍ່ມີຮູບ" ຄວາມກຳນົດໝາຍວ່າ "ເຮົາຈັກມີສັນຍາ" ຄວາມກຳນົດໝາຍວ່າ "ເຮົາຈັກບໍ່ມີສັນຍາ" ຄວາມກຳນົດໝາຍວ່າ "ເຮົາຈັກມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ"

ຄວາມກຳນົດໝາຍເປັນຄືພະຍາດ ຄວາມກຳນົດໝາຍເປັນຄືຫົວຝີ ຄວາມກຳນົດໝາຍເປັນຄືລູກສອນ[๑] ແຕ່ເຮົາຮຽກພິກຂຸວ່າ "ມຸນີຜູ້ສະງົບແລ້ວ" ຍ້ອນກ້າວລ່ວງຄວາມກຳນົດໝາຍທັງປວງ ຍ້ອນວ່າມຸນີຜູ້ສະງົບແລ້ວ ຍ່ອມບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ກຳເຣີບ ບໍ່ທະເຍີທະຍານ ແມ່ນມຸນີນັ້ນ ກໍບໍ່ມີເຫດທີ່ຕ້ອງເກີດ ເມື່ອບໍ່ເກີດ ຈັກແກ່ໄດ້ແນວໃດ ເມື່ອບໍ່ແກ່ ຈັກຕາຍໄດ້ແນວໃດ ເມື່ອບໍ່ຕາຍ ຈັກກຳເຣີບໄດ້ແນວໃດ ເມື່ອບໍ່ກຳເຣີບ ຈັກທະເຍີທະຍານໄດ້ແນວໃດ

ຄຳທີ່ເຮົາກ່າວໄວ້ວ່າ "ເມື່ອຄວາມກຳນົດໝາຍ ຊຶມຊາບບໍ່ເຖິງບຸຣຸດຜູ້ກົງຢູ່ໃນອະທິຖານທຳ ບັນດິດຈຶ່ງຮຽກບຸຣຸດນັ້ນວ່າ "ມຸນີຜູ້ສະງົບແລ້ວ" ນັ້ນ ຍ້ອນອາໄສເຫດນີ້ເຮົາຈຶ່ງກ່າວໄວ້

ພິກຂຸ ທ່ານຈົ່ງຈື່ທາດວິພັງ ໖ ໂດຍຫຍໍ້ນີ້ ຂອງເຮົາໄວ້"

[໓໗໐] ຄັ້ງນັ້ນແລ ທ່ານປຸກກຸສາຕິຮູ້ວ່າ "ໄດ້ຂ່າວວ່າ ພຣະສາດສະດາຂອງເຮົາສະເດັດມາເຖິງແລ້ວ ໄດ້ຂ່າວວ່າ ພຣະສຸຄົດຂອງເຮົາສະເດັດມາເຖິງແລ້ວ ໄດ້ຂ່າວວ່າ ພຣະສຳມາສຳພຸດທະເຈົ້າຂອງເຮົາສະເດັດມາເຖິງແລ້ວ" ຈຶ່ງລຸກຂຶ້ນຈາກອາສະນະ ຫົ່ມຜ້າບ່ຽງບ່າ ໝອບລົງແທບພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ແລ້ວຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຜູ້ໂງ່ ຈ້ຳ ເບົາປັນຍາ ມີຄວາມຜິດທີ່ຂ້າພຣະອົງໄດ້ສຳຄັນພຣະຜູ້ມີພຣະພາກເຈົ້າວ່າ ຄວນຮຽກດ້ວຍອາທະວ່າ ຜູ້ມີອາຍຸ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງໃຫ້ອະໄພໂທດແກ່ຂ້າພຣະອົງ ເພື່ອສັງລວມຕໍ່ໄປ"[๔]

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖ້າຈັ່ງຊັ້ນແລ້ວ ທ່ານຜູ້ໂງ່ ຈ້ຳ ເບົາປັນຍາ ມີຄວາມຜິດທີ່ໄດ້ສຳຄັນເຮົາວ່າຄວນຮຽກດ້ວຍອາທະວ່າຜູ້ມີອາຍຸ ແຕ່ທ່ານເຫັນຄວາມຜິດໂດຍເປັນຄວາມຜິດແລ້ວກະທຳຄືນຕາມທຳ ເຮົາກໍຍົກໂທດໃຫ້ທ່ານ ພິກຂຸ ກໍການທີ່ບຸກຄົນເຫັນຄວາມຜິດໂດຍເປັນຄວາມຜິດ ແລ້ວສະແດງຄືນຕາມທຳ ເຖິງຄວາມສັງລວມຕໍ່ໄປ ນີ້ເປັນຄວາມຈະເລີນໃນອະຣິຍະວິໄນ"

ທ່ານປຸກກຸສາຕິຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເພິ່ງໄດ້ອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າດ້ວຍເທີ້ນ"

"ທ່ານມີບາດແລະຈີວອນຄົບແລ້ວບໍ?"

"ບໍ່ຄົບ ຂ້ານ້ອຍ"

"ພິກຂຸ ຕະຖາຄົດທັງຫຼາຍ ຈະບໍ່ໃຫ້ກຸນລະບຸດຜູ້ມີບາດ ແລະ ຈີວອນບໍ່ຄົບອຸປະສົມບົດ"

ລຳດັບນັ້ນ ທ່ານປຸກກຸສາຕິຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ລຸກຂຶ້ນຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ທຳປະທັກຂິນແລ້ວຈາກໄປສະແຫວງຫາບາດແລະຈີວອນ ແຕ່ທັນໃດນັ້ນເອງ ແມ່ງົວໄດ້ດຸດທ່ານປຸກກຸສາຕິຜູ້ກຳລັງທ່ຽວສະແຫວງຫາບາດ ແລະ ຈີວອນເສຍຊີວິດໃນທີ່ນັ້ນ

ຕໍ່ມາ ພິກຂຸຈຳນວນຫຼາຍ ໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ກຸນລະບຸດຊື່ປຸກກຸສາຕິທີ່ພຣະຜູ້ມີພຣະພາກເຈົ້າຊົງໂອວາດດ້ວຍພຣະໂອວາດໂດຍຫຍໍ້ນັ້ນ ຕາຍສາແລ້ວ ເຂົາມີຄະຕິເປັນແນວໃດ? ມີສຳປະຣາຍະພົບເປັນແນວໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ປຸກກຸສາຕິກຸນລະບຸດເປັນບັນດິດ ໄດ້ບັນລຸທຳສົມຄວນແກ່ທຳແລ້ວ ແລະ ທ່ານບໍ່ໄດ້ເຮັດໃຫ້ເຮົາລຳບາກຍ້ອນເຫດແຫ່ງທຳ ຍ້ອນໂອຣຳພາຄິຍະສັງໂຍດ ໕ ໝົດໄປປຸກກຸສາຕິກຸນລະບຸດ ຈຶ່ງເປັນໂອປະປາຕິກະ[๑] ຈະນິບພານໃນໂລກນັ້ນບໍ່ຫວນກັບມາຈາກໂລກນັ້ນອີກ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ທາດວິພັງຄະສູດທີ ໑໐ ຈົບ**

# ໑໑. ສັດຈະວິພັງຄະສູດ

## ວ່າດ້ວຍການຈຳແນກສັດຈະ

[໓໗໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

"ພິກຂຸທັງຫຼາຍ ທຳມະຈັກອັນປະເສີດທີ່ຕະຖາຄົດ ຜູ້ເປັນອະຣະຫັນຕະ ສຳມາສຳພຸດທະເຈົ້າ ໄດ້ປະກາດແລ້ວ ຢູ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ອັນສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກ ໃຫ້ປີ້ນກັບບໍ່ໄດ້ ຄື ການບອກ[໑] ການສະແດງ[໒] ການບັນຍັດ[໓] ການກຳນົດ[໔] ການເປີດເຜີຍ[໕] ການຈຳແນກ[໖] ການເຮັດໃຫ້ງ່າຍ[໗] ເຊິ່ງອະຣິຍະສັດ ໔

ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ການບອກ ການສະແດງ ການບັນຍັດ ການກຳນົດ ການເປີດເຜີຍ ການຈຳແນກ ການເຮັດໃຫ້ງ່າຍເຊິ່ງ ທຸກຂະອະຣິຍະສັດ
໒. ການບອກ ການສະແດງ ການບັນຍັດ ການກຳນົດ ການເປີດເຜີຍ ການຈຳແນກ ການເຮັດໃຫ້ງ່າຍເຊິ່ງ ທຸກຂະສະມຸທະຍະອະຣິຍະສັດ
໓. ການບອກ ການສະແດງ ການບັນຍັດ ການກຳນົດ ການເປີດເຜີຍ ການຈຳແນກ ການເຮັດໃຫ້ງ່າຍເຊິ່ງ ທຸກຂະນິໂຣທະອະຣິຍະສັດ
໔. ການບອກ ການສະແດງ ການບັນຍັດ ການກຳນົດ ການເປີດເຜີຍ ການຈຳແນກ ການເຮັດໃຫ້ງ່າຍເຊິ່ງ ທຸກຂະນິໂຣທະຄາມິນີ ປະຕິປະທາອະຣິຍະສັດ

ທຳມະຈັກອັນປະເສີດທີ່ຕະຖາຄົດ ຜູ້ເປັນອະຣະຫັນຕະ ສຳມາສຳພຸດທະເຈົ້າ ໄດ້ປະກາດແລ້ວ ທີ່ ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ອັນສະມະນະ ພາມ ເທວະດາ ມານ ພົມ ຫຼືໃຜ ໆ ໃນໂລກ ໃຫ້ປີ້ນກັບບໍ່ໄດ້ ຄື ການບອກ ການສະແດງ ການບັນຍັດ ການກຳນົດ ການເປີດເຜີຍ ການຈຳແນກ ເຮັດໃຫ້ງ່າຍເຊິ່ງອະຣິຍະສັດ ໔ ນີ້

ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈົ່ງຄົບ ສາຣີບຸດ ແລະ ໂມກຄັນລານະ ທ່ານທັງຫຼາຍຈົ່ງຄົບ ສາຣີບຸດ ແລະ ໂມກຄັນລານະ ເທີ້ນ ສາຣີບຸດ ແລະ ໂມກຄັນລານະ ເປັນພິກຂຸສະຫຼາດ ເປັນຜູ້ອະນຸເຄາະ[໑]ເພື່ອນພົມມະຈາຣີທັງຫຼາຍ ສາຣີບຸດປຽບຄືຜູ້ໃຫ້ກຳເນີດ ໂມກຄັນລານະປຽບຄືຜູ້ບຳລຸງລ້ຽງເດັກອ່ອນທີ່ເກີດແລ້ວ ສາຣີບຸດຍ່ອມແນະນຳໃນໂສດາປັດຕິຜົນ ໂມກຄັນລານະຍ່ອມແນະນຳໃນປະໂຫຍດທີ່ສູງສຸດ ສາຣີບຸດສາມາດທີ່ຈະບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍເຊິ່ງ ອະຣິຍະສັດ ໔ ໄດ້ໂດຍພິດສະດານ"

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດ ເມື່ອຕັດເວີຍຍາກະຣະນະພາສິດນີ້ແລ້ວ ຈຶ່ງຊົງລຸກຂຶ້ນຈາກພຸດທະອາດ ສະເດັດເຂົ້າໄປສູ່ທີ່ປະທັບ

[໓໗໒] ຂະນະນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປແລ້ວບໍ່ດົນ ທ່ານພຣະສາຣີບຸດໄດ້ຮຽກພິກຂຸທັງຫຼາຍມາດ້ວຍກ່າວວ່າ "ທ່ານຜູ້ມີອາຍຸທັງຫຼາຍ" ເມື່ອພິກຂຸເຫຼົ່ານັ້ນຮັບຄຳ

ແລ້ວ ທ່ານພຣະສາຣີບຸດໄດ້ກ່າວເລື້ອງນີ້ ວ່າ

"ທ່ານຜູ້ມີອາຍຸທັງຫຼາຍ ທຳມະຈັກອັນປະເສີດ ພຣະຕະຖາຄົດຜູ້ເປັນອະຣະຫັນຕະ ສຳມາສຳພຸດທະເຈົ້າໄດ້ປະກາດແລ້ວ ທີ່ປ່າອິສິປະຕະນະ ມະຣຶຄະທາຍະວັນ ເຂດນະຄອນພາຣານະສີ ອັນສະມະນະພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກເຮັດໃຫ້ປີ້ນກັບບໍ່ໄດ້

ຄື ການບອກ ການສະແດງ ການບັນຍັດ ການກຳນົດ ການເປີດເຜີຍ ການຈຳແນກ ການເຮັດໃຫ້ງ່າຍເຊິ່ງ ອະຣິຍະສັດ ໔ ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ການບອກ ການສະແດງ ການບັນຍັດ ການກຳນົດ ການເປີດເຜີຍ ການຈຳແນກ ການເຮັດໃຫ້ງ່າຍເຊິ່ງ ທຸກຂະອະຣິຍະສັດ
໒. ການບອກ ການສະແດງ ການບັນຍັດ ການກຳນົດ ການເປີດເຜີຍ ການຈຳແນກ ການເຮັດໃຫ້ງ່າຍເຊິ່ງ ທຸກຂະສະມຸທະຍະອະຣິຍະສັດ
໓. ການບອກ ການສະແດງ ການບັນຍັດ ການກຳນົດ ການເປີດເຜີຍ ການຈຳແນກ ການເຮັດໃຫ້ງ່າຍເຊິ່ງ ທຸກຂະນິໂຣທະອະຣິຍະສັດ
໔. ການບອກ ການສະແດງ ການບັນຍັດ ການກຳນົດ ການເປີດເຜີຍ ການຈຳແນກ ການເຮັດໃຫ້ງ່າຍເຊິ່ງ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

[໓໗໓] ທຸກຂະອະຣິຍະສັດ (ອະຣິຍະສັດຄືທຸກ) ເປັນແນວໃດ?

ຄື ຊາດ ເປັນທຸກ ຊະຣາ ເປັນທຸກ ມໍລະນະ ເປັນທຸກ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດ ເປັນທຸກ ການບໍ່ໄດ້ສິ່ງທີ່ຕ້ອງການ ເປັນທຸກ ໂດຍຫຍໍ້ອຸປາທານຂັນ ໕ ເປັນທຸກ

ຊາດ ເປັນແນວໃດ?

ຄື ຄວາມເກີດ ຄວາມເກີດພ້ອມ ຄວາມຢັ່ງລົງ ຄວາມບັງເກີດ ຄວາມບັງເກີດສະເພາະ ຄວາມຜາກົດແຫ່ງຂັນ ຄວາມໄດ້ອາຍະຕະນະ ໃນໝູ່ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ ນີ້ຮຽກວ່າ ຊາດ

ຊະຣາ ເປັນແນວໃດ?

ຄື ຄວາມແກ່ ຄວາມຊຸດໂຊມ ຄວາມມີແຂ້ວຫຼ່ອນ ຄວາມມີຜົມຫງອກ ຄວາມມີໜັງຫ່ຽວຍານ ຄວາມເສື່ອມອາຍຸ ຄວາມແກ່ຫງ່ອມແຫ່ງອິນຊີ ໃນໝູ່ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ ນີ້ຮຽກວ່າ ຊະຣາ

ມໍລະນະ ເປັນແນວໃດ?

ຄື ຄວາມຈຸຕິ ຄວາມເຄື່ອນໄປ ຈາກໝູ່ສັດນັ້ນ ໆ ຄວາມທຳລາຍໄປ ຄວາມຫາຍໄປ ຄວາມຕາຍກ່າວຄືຄວາມຕາຍ ການທຳກາລະ ຄວາມແຕກແຫ່ງຂັນ ຄວາມປະຖິ້ມຮ່າງກາຍ ຄວາມຂາດສູນແຫ່ງຊີວິຕິນຊີຂອງສັດເຫຼົ່ານັ້ນ ໆ ນີ້ຮຽກວ່າ ມໍລະນະ

ໂສກະ ເປັນແນວໃດ?

ຄື ຄວາມເສົ້າໂສກ ກິຣິຍາທີ່ເສົ້າໂສກ ພາວະທີ່ເສົ້າໂສກ ຄວາມເຫືອດແຫ້ງພາຍໃນ ຄວາມແຫ້ງພຸ່ຍພາຍໃນ ຂອງຜູ້ທີ່ປະກອບດ້ວຍຄວາມເສື່ອມແນວໃດແນວໜຶ່ງ (ຫຼື) ຜູ້ທີ່ຖືກເຫດແຫ່ງທຸກແນວໃດແນວໜຶ່ງກະທົບ ນີ້ຮຽກວ່າ ໂສກະ

ປະຣິເທວະ ເປັນແນວໃດ?

ຄື ຄວາມຮ້ອງໄຫ້ ຄວາມໄຫ້ຈົ່ມ ກິຣິຍາທີ່ຮ້ອງໄຫ້ ກິຣິຍາທີ່ໄຫ້ຈົ່ມ ພາວະທີ່ຮ້ອງໄຫ້ ພາວະທີ່ໄຫ້ຈົ່ມ ຂອງຜູ້ທີ່ປະກອບດ້ວຍຄວາມເສື່ອມແນວໃດແນວໜຶ່ງ (ຫຼື) ຜູ້ທີ່ຖືກເຫດແຫ່ງທຸກ ແນວໃດແນວໜຶ່ງກະທົບ ນີ້ຮຽກວ່າ ປະຣິເທວະ

ທຸກ ເປັນແນວໃດ?

ຄື ຄວາມທຸກທາງກາຍ ຄວາມບໍ່ສຸກສະບາຍທາງກາຍ ຄວາມສະເຫວີຍອາລົມທີ່ເປັນທຸກ ບໍ່ສຸກສະບາຍ ອັນເກີດຈາກກາຍສຳຜັດ ນີ້ຮຽກວ່າ ທຸກ

ໂທມະນັດ ເປັນແນວໃດ?

ຄື ຄວາມທຸກທາງໃຈ ຄວາມບໍ່ສຸກສະບາຍທາງໃຈ ຄວາມສະເຫວີຍອາລົມທີ່ເປັນທຸກ ບໍ່ສຸກສະບາຍ ອັນເກີດຈາກມະໂນສຳຜັດ ນີ້ຮຽກວ່າ ໂທມະນັດ

ອຸປາຍາດ ເປັນແນວໃດ?

ຄື ຄວາມແຄ້ນ ຄວາມຄັບແຄ້ນ ພາວະທີ່ແຄ້ນ ພາວະທີ່ຄັບແຄ້ນ ຂອງຜູ້ທີ່ປະກອບດ້ວຍຄວາມເສື່ອມແນວໃດແນວໜຶ່ງ (ຫຼື) ຜູ້ທີ່ຖືກເຫດແຫ່ງທຸກແນວໃດແນວໜຶ່ງກະທົບ ນີ້ຮຽກວ່າ ອຸປາຍາດ

ການບໍ່ໄດ້ສິ່ງທີ່ຕ້ອງການເປັນທຸກ ເປັນແນວໃດ?

ຄື ໝູ່ສັດຜູ້ມີຄວາມເກີດເປັນທຳມະດາ ເກີດຄວາມປາຖະໜາຂຶ້ນແນວນີ້ວ່າ "ເຮັດຈັ່ງໃດນໍ? ເຮົາທັງຫຼາຍຈຶ່ງຈັກບໍ່ມີຄວາມເກີດເປັນທຳມະດາ ຫຼື ຄວາມເກີດບໍ່ເພິ່ງມາເຖິງເຮົາທັງຫຼາຍ"

ແຕ່ຄວາມປາຖະໜານີ້ບໍ່ເພິ່ງສຳເລັດໄດ້ຕາມຄວາມປາຖະໜາ ນີ້ຮຽກວ່າການບໍ່ໄດ້ສິ່ງທີ່ຕ້ອງການ ເປັນທຸກ

ໝູ່ສັດຜູ້ມີຄວາມ ແກ່ ເປັນທຳມະດາ ຯລຯ.
ໝູ່ສັດຜູ້ມີຄວາມ ເຈັບ ເປັນທຳມະດາ ຯລຯ
ໝູ່ສັດຜູ້ມີຄວາມ ຕາຍ ເປັນທຳມະດາ ຯລຯ

ໝູ່ສັດຜູ້ມີຄວາມເສົ້າໂສກ ຄວາມໄຫ້ຈົ່ມ ຄວາມທຸກກາຍ ຄວາມທຸກໃຈ ແລະ ຄວາມຄັບແຄ້ນເປັນທຳມະດາ ຕ່າງກໍເກີດຄວາມປາຖະໜາຂຶ້ນແນວນີ້ວ່າ "ເປັນຫຍັງນໍ ເຮົາທັງຫຼາຍຈຶ່ງຈັກບໍ່ມີຄວາມເສົ້າໂສກ ຄວາມໄຫ້ຈົ່ມ ຄວາມທຸກກາຍ ຄວາມທຸກໃຈ ແລະຄວາມຄັບແຄ້ນເປັນທຳມະດາ ຂໍຄວາມໂສກເສົ້າ ຄວາມໄຫ້ຈົ່ມ ຄວາມທຸກກາຍ ຄວາມທຸກໃຈ ແລະ ຄວາມຄັບແຄ້ນບໍ່ເພິ່ງມາເຖິງເຮົາທັງຫຼາຍ" ແຕ່ຄວາມປາຖະໜານີ້ບໍ່ເພິ່ງສຳເລັດໄດ້ຕາມຄວາມປາຖະໜາ ນີ້ຮຽກວ່າການບໍ່ໄດ້ສິ່ງທີ່ຕ້ອງການ ເປັນທຸກ

ໂດຍຫຍໍ້ ອຸປາທານຂັນ ໕ ເປັນທຸກ ເປັນແນວໃດ? ຄື

໑. ຣູປູປາທານະຂັນ (ອຸປາທານຂັນຄືຣູບ)
໒. ເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ)
໓. ສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ)
໔. ສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ)
໕. ວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ)

ເຫຼົ່ານີ້ຮຽກໂດຍຫຍໍ້ວ່າ ອຸປາທານຂັນ ໕ ເປັນທຸກ ນີ້ຮຽກວ່າ ທຸກຂະອະຣິຍະສັດ

[໓໗໔] ທຸກຂະສະມຸທະຍະອະຣິຍະສັດ (ອະຣິຍະສັດຄືເຫດເກີດແຫ່ງທຸກ) ເປັນແນວໃດ?

ຄື ຕັນຫານີ້ເປັນເຫດເກີດໃນພົບໃໝ່ ປະກອບດ້ວຍຄວາມກຳໜັດຍິນດີ ເປັນເຫດເພີດເພີນໃນອາລົມນັ້ນ ໆ ຄື ກາມະຕັນຫາ ພະວະຕັນຫາ ແລະ ວິພະວະຕັນຫາ[១] ນີ້ຮຽກວ່າ ທຸກຂະສະມຸທະຍະອະຣິຍະສັດ

ທຸກຂະນິໂຣທະອະຣິຍະສັດ (ອະຣິຍະສັດຄືຄວາມດັບທຸກ) ເປັນແນວໃດ?

ຄື ຄວາມຄາຍອອກ ແລະ ຄວາມດັບໂດຍບໍ່ເຫຼືອ ຄວາມປ່ອຍວາງ ຄວາມສະລະຄືນ ຄວາມພົ້ນ ຄວາມບໍ່ຕິດຢູ່ ນີ້ຮຽກວ່າ ທຸກຂະນິໂຣທະອະຣິຍະສັດ

## ອະຣິຍະມັກມີອົງ ໘

[໓໗໕] ທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດ (ອະຣິຍະສັດຄືຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ) ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ນັ້ນແລ ໄດ້ແກ່

| | |
|---|---|
| ໑. ສຳມາທິດຖິ | ໒. ສຳມາສັງກັບປະ |
| ໓. ສຳມາວາຈາ | ໔. ສຳມາກຳມັນຕະ |
| ໕. ສຳມາອາຊີວະ | ໖. ສຳມາວາຍາມະ |
| ໗. ສຳມາສະຕິ | ໘. ສຳມາສະມາທິ |

ສຳມາທິດຖິ ເປັນແນວໃດ?

ຄື ຄວາມຮູ້ໃນທຸກ (ຄວາມທຸກ) ຄວາມຮູ້ໃນທຸກຂະສະມຸໄທ (ເຫດເກີດແຫ່ງທຸກ) ຄວາມຮູ້ໃນທຸກຂະນິໂຣທະ (ຄວາມດັບທຸກ) ຄວາມຮູ້ໃນທຸກຂະນິໂຣທະຄາມີນີປະຕິປະທາ (ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ) ນີ້ຮຽກວ່າ ສຳມາທິດຖິ

ສຳມາສັງກັບປະ ເປັນແນວໃດ?

ຄື ຄວາມດຳຣິໃນການອອກຈາກກາມ ຄວາມດຳຣິໃນການບໍ່ພະຍາບາດ ຄວາມດຳຣິໃນການບໍ່ບຽດບຽນ ນີ້ຮຽກວ່າ ສຳມາສັງກັບປະ

ສຳມາວາຈາ ເປັນແນວໃດ?

ຄື ເຈຕະນາເປັນເຫດເວັ້ນຈາກການເວົ້າຕົວະ ເຈຕະນາເປັນເຫດເວັ້ນຈາກການເວົ້າສັບສໍ່ ເຈຕະນາເປັນເຫດເວັ້ນຈາກການເວົ້າຄຳຫຍາບ ເຈຕະນາເປັນເຫດເວັ້ນຈາກການເວົ້າບໍ່ມີສາຣະ ນີ້ຮຽກວ່າ ສຳມາວາຈາ

ສຳມາກຳມັນຕະ ເປັນແນວໃດ?

ຄື ເຈຕະນາເປັນເຫດເວັ້ນຈາກການຂ້າສັດ ເຈຕະນາເປັນເຫດເວັ້ນຈາກການລັກຊັບ ເຈຕະນາເປັນເຫດເວັ້ນຈາກການປະພຶດຜິດໃນກາມ ນີ້ຮຽກວ່າ ສຳມາກຳມັນຕະ

ສຳມາອາຊີວະ ເປັນແນວໃດ?

ຄື ພຣະອະຣິຍະສາວົກໃນພຣະທຳວິໄນນີ້ ລະມິດສາອາຊີວະແລ້ວ ລ້ຽງຊີບດ້ວຍສຳມາອາຊີວະ ນີ້ຮຽກວ່າ ສຳມາອາຊີວະ

ສຳມາວາຍາມະ ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ ຍັງສັນທະໃຫ້ເກີດ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອຄວາມບໍ່ເກີດຂຶ້ນແຫ່ງບາບອະກຸສົນທຳທີ່ຍັງບໍ່ເກີດຂຶ້ນ ຍັງສັນທະໃຫ້ເກີດ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ ຍັງສັນທະໃຫ້ເກີດ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອຄວາມເກີດຂຶ້ນແຫ່ງກຸສົນທຳທີ່ຍັງບໍ່ເກີດຂຶ້ນ ຍັງສັນທະໃຫ້ເກີດ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອຄວາມດຳລົງຢູ່ ບໍ່ລຶບເລືອນ ພິນໂຍພາບ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ ນີ້ຮຽກວ່າ ສຳມາວາຍາມະ

ສຳມາສະຕິ ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ເປັນຜູ້ມີຄວາມພຽນ ມີສຳປະຊັນຍະ ມີສະຕິພິຈາລະນາເຫັນກາຍໃນກາຍຢູ່ ກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້ ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ฯລฯ ພິຈາລະນາເຫັນຈິດໃນຈິດຢູ່ ฯລฯ ເປັນຜູ້ມີຄວາມພຽນ ມີສຳປະຊັນຍະ ມີສະຕິພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ເພື່ອກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້ ນີ້ຮຽກວ່າ ສຳມາສະຕິ

ສຳມາສະມາທິ ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ ສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປິຕິແລະສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸນັ້ນຈຶ່ງບັນລຸທຸຕິຍະຊານ ທີ່ມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປິຕິແລະສຸກອັນເກີດຈາກສະມາທິຢູ່ ฯລฯ ບັນລຸຕະຕິຍະຊານ ฯລฯ ບັນລຸຈະຕຸດຖະຊານຢູ່ ນີ້ຮຽກວ່າ ສຳມາສະມາທິ

ນີ້ຮຽກວ່າ ທຸກຂະນິໂຣທະຄາມິນີ ປະຕິປະທາອະຣິຍະສັດ

ທ່ານຜູ້ມີອາຍຸທັງຫຼາຍ ພຣະທຳຈັກອັນປະເສີດທີ່ພຣະຕະຖາຄົດ ຜູ້ເປັນອະຣະຫັນຕະສຳມາສຳພຸດທະເຈົ້າໄດ້ຊົງປະກາດໄວ້ແລ້ວ ທີ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ອັນສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກໃຫ້ປິ່ນກັບບໍ່ໄດ້ ຄືຊົງບອກ ຊົງສະແດງ ຊົງບັນຍັດ ຊົງກຳນົດ ຊົງເປີດເຜີຍ ຊົງຈຳແນກ ຊົງເຮັດໃຫ້ງ່າຍເຊິ່ງອະຣິ

ຍະສັດ ໔ ນີ້"

ທ່ານພຣະສາຣີບຸດໄດ້ກ່າວພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພາສິດຂອງທ່ານພຣະສາຣີບຸດ ດັ່ງນີ້ແລ

**ສັດຈະວິພັງຄະສູດທີ ໑໑ ຈົບ**

# ໑໔. ທັກຂິນາວິພັງຄະສູດ

## ວ່າດ້ວຍການຈຳແນກທັກຂິນາທານ

[໓໗໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວ້ນສັກກະ ສະໄໝນັ້ນແລ ພຣະນາງມະຫາປະຊາບໍດີໂຄຕະມີ ຊົງຖືຜ້າໃໝ່ຄູ່ໜຶ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ປະທັບນັ່ງຢູ່ບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຜ້າໃໝ່ຄູ່ນີ້ ຂ້ານ້ອຍເຂັນຝ້າຍເອງ ຕ່ຳເອງ ຕັ້ງໃຈອຸທິດຖວາຍພຣະຜູ້ມີພຣະພາກເຈົ້າ ຂໍພຣະຜູ້ມີພຣະພາກເຈົ້າຊົງອາໄສຄວາມອະນຸເຄາະ ຮັບຜ້າໃໝ່ຄູ່ນີ້ຂອງຂ້ານ້ອຍດ້ວຍເທີ້ນ"

ເມື່ອພຣະນາງມະຫາປະຊາບໍດີໂຄຕະມີ ຂາບທູນແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ "ໂຄຕະມີ ຂໍພຣະນາງຈົ່ງຖວາຍສົງເທີ້ນ ເມື່ອພຣະນາງຖວາຍສົງແລ້ວ ຈັກເປັນອັນບູຊາອາຕະມາພາບແລະສົງ"

ແມ່ນເທື່ອທີ ໒ ພຣະນາງມະຫາປະຊາບໍດີໂຄຕະມີ ກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຜ້າໃໝ່ຄູ່ນີ້ ຂ້ານ້ອຍເຂັນຝ້າຍເອງ ຕ່ຳເອງ ຕັ້ງໃຈອຸທິດຖວາຍພຣະຜູ້ມີພຣະພາກເຈົ້າ ຂໍພຣະຜູ້ມີພຣະພາກເຈົ້າຊົງອາໄສຄວາມອະນຸເຄາະ ຮັບຜ້າໃໝ່ຄູ່ນີ້ຂອງຂ້ານ້ອຍເທີ້ນ"

ແມ່ນເທື່ອທີ ໒ ພຣະຜູ້ມີພຣະພາກເຈົ້າ ກໍໄດ້ຕັດກັບພຣະນາງມະຫາປະຊາບໍດີໂຄຕະມີວ່າ "ໂຄຕະມີ ຂໍພຣະນາງຈົ່ງຖວາຍສົງເທີ້ນ ເມື່ອພຣະນາງຖວາຍສົງແລ້ວ ຈັກເປັນອັນບູຊາອາຕະມາພາບແລະສົງ"

ແມ່ນເທື່ອທີ ໓ ພຣະນາງມະຫາປະຊາບໍດີໂຄຕະມີ ກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຜ້າໃໝ່ຄູ່ນີ້ ຂ້ານ້ອຍເຂັນຝ້າຍເອງ ຕ່ຳເອງ ຕັ້ງໃຈອຸທິດຖວາຍ ພຣະຜູ້ມີພຣະພາກເຈົ້າ ຂໍພຣະຜູ້ມີພຣະພາກເຈົ້າຊົງອາໄສຄວາມອະນຸເຄາະ ຮັບຜ້າໃໝ່ຄູ່ນີ້ ຂອງຂ້ານ້ອຍເທີ້ນ"

ແມ່ນເທື່ອທີ ໓ ພຣະຜູ້ມີພຣະພາກເຈົ້າ ກໍໄດ້ຕັດກັບພຣະນາງມະຫາປະຊາບໍດີໂຄຕະມີ ວ່າ "ໂຄຕະມີ ຂໍພຣະນາງຈົ່ງຖວາຍສົງເທີ້ນ ເມື່ອພຣະນາງຖວາຍສົງແລ້ວ ຈັກເປັນອັນບູຊາອາ ຕະມາພາບແລະສົງ"

[໓໗໗] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະອານົນໄດ້ຂາບທູນພຣະຜູ້ ມີພຣະພາກເຈົ້າ ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດຮັບຜ້າໃໝ່ທັງຄູ່ ຂອງພຣະນາງມະຫາປະຊາບໍດີໂຄຕະມີເທີ້ນ ພຣະນາງມະຫາປະຊາບໍດີໂຄຕະມີ ຊົງມີອຸປະກາ ຣະຫຼາຍ ເປັນພຣະແມ່ນ້າຂອງພຣະຜູ້ມີພຣະພາກເຈົ້າ ຊົງທະນຸຖະໜອມລ້ຽງ ໃຫ້ພຣະຜູ້ມີພຣະ ພາກເຈົ້າສະເຫວີຍນ້ຳນົມ ໃນເມື່ອພຣະຊົນນີສະຫວັນຄົດແລ້ວ ແມ່ນພຣະຜູ້ມີພຣະພາກເຈົ້າກໍຊົງ ມີອຸປະກາຣະຫຼາຍແກ່ພຣະນາງມະຫາປະຊາບໍດີໂຄຕະມີ ພຣະນາງມະຫາປະຊາບໍດີໂຄຕະມີ ຊົງອາໄສພຣະຜູ້ມີພຣະພາກເຈົ້າແລ້ວ ຈຶ່ງໄດ້ເຖິງພຣະພຸດທະເຈົ້າ ພຣະທຳ ພຣະສົງ ເປັນສະ ຣະນະ ຊົງເປັນຜູ້ເວັ້ນຂາດຈາກການຂ້າສັດ ຊົງເປັນຜູ້ເວັ້ນຂາດຈາກການລັກຊັບ ຊົງເປັນຜູ້ເວັ້ນ ຂາດຈາກການປະພຶດຜິດໃນກາມ ຊົງເປັນຜູ້ເວັ້ນຂາດຈາກການເວົ້າຕົວະ ຊົງເປັນຜູ້ເວັ້ນຂາດ ຈາກການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ[๑] ຊົງອາໄສ ພຣະຜູ້ມີພຣະພາກເຈົ້າແລ້ວ ຈຶ່ງຊົງມີຄວາມເຫຼື້ອມໃສແນ່ວແນ່ໃນພຣະພຸດທະເຈົ້າ ມີຄວາມ ເຫຼື້ອມໃສແນ່ວແນ່ໃນພຣະທຳ ມີຄວາມເຫຼື້ອມໃສແນ່ວແນ່ໃນພຣະສົງ ມີສີນທີ່ພຣະອະຣິຍະຍິນດີ ຊົງອາໄສພຣະຜູ້ມີພຣະພາກເຈົ້າແລ້ວ ຈຶ່ງເປັນຜູ້ໝົດຄວາມສົງໄສໃນທຸກ ໝົດຄວາມສົງໄສໃນ ທຸກຂະສະມຸໄທ ໝົດຄວາມສົງໄສໃນທຸກຂະນິໂຣທະ ໝົດຄວາມສົງໄສໃນທຸກຂະນິໂຣທະຄາມິນີ ປະຕິປະທາ

ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນພຣະຜູ້ມີພຣະພາກເຈົ້າ ກໍຊົງມີພຣະອຸປະກາຣະຫຼາຍແກ່ ພຣະນາງມະຫາປະຊາບໍດີໂຄຕະມີ"

[໓໗໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຂໍ້ນີ້ເປັນແນວນັ້ນ ອານົນ ຂໍ້ນີ້ເປັນແນວນັ້ນ ອາ ນົນຍ້ອນວ່າ ບຸກຄົນອາໄສບຸກຄົນໃດແລ້ວ ເປັນຜູ້ເຖິງພຣະພຸດທະເຈົ້າເປັນສະຣະນະ ເຖິງ ພຣະທຳເປັນສະຣະນະ ເຖິງພຣະສົງເປັນສະຣະນະ ເຮົາບໍ່ກ່າວການກະທຳນີ້ ຄື ການຂາບໄຫວ້ ການລຸກຮັບ ການທຳອັນຊະລີ ການເຮັດສາມີຈິກຳ ດ້ວຍການບໍລິຈາກຈີວອນ ບິນທະບາດ ເສ ນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ ວ່າເປັນການເຮັດຕອບແທນກັນຂອງບຸກຄົນນີ້ກັບ ບຸກຄົນນີ້

ບຸກຄົນອາໄສບຸກຄົນໃດແລ້ວ ເປັນຜູ້ເວັ້ນຂາດຈາກການຂ້າສັດ ເປັນຜູ້ເວັ້ນຂາດຈາກການລັກຊັບ ເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ ເປັນຜູ້ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ເຮົາບໍ່ກ່າວການກະທຳນີ້ ຄື ການຂາບໄຫວ້ ການລຸກຮັບ ການທຳອັນຊະລີ ການເຮັດສາມີຈິກຳ ດ້ວຍການບໍລິຈາກຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ວ່າເປັນການເຮັດຕອບແທນກັນຂອງບຸກຄົນນີ້ກັບບຸກຄົນນີ້

ບຸກຄົນອາໄສບຸກຄົນໃດແລ້ວ ເປັນຜູ້ມີຄວາມເຫຼື້ອມໃສແນ່ວແນ່ໃນພຣະພຸດທະເຈົ້າ ມີຄວາມເຫຼື້ອມໃສແນ່ວແນ່ໃນພຣະທຳ ມີຄວາມເຫຼື້ອມໃສແນ່ວແນ່ໃນພຣະສົງ ມີສິນທີ່ພຣະອະຣິຍະຍິນດີ ເຮົາບໍ່ກ່າວການກະທຳນີ້ ຄື ການຂາບໄຫວ້ ການລຸກຮັບ ການທຳອັນຊະລີ ການເຮັດສາມີຈິກຳ ດ້ວຍການບໍລິຈາກຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ ວ່າເປັນການເຮັດຕອບແທນກັນຂອງບຸກຄົນນີ້ກັບບຸກຄົນນີ້

ບຸກຄົນອາໄສບຸກຄົນໃດແລ້ວ ເປັນຜູ້ໝົດຄວາມສົງໄສໃນທຸກ ໝົດຄວາມສົງໄສໃນທຸກຂະສະມຸໄທ ໝົດຄວາມສົງໄສໃນທຸກຂະນິໂຣທະ ໝົດຄວາມສົງໄສໃນທຸກຂະນິໂຣທະຄາມິນີປະຕິປະທາ ໄດ້ ເຮົາບໍ່ກ່າວການກະທຳນີ້ ຄື ການຂາບໄຫວ້ ການລຸກຮັບ ການທຳອັນຊະລີ ການເຮັດສາມີຈິກຳ ດ້ວຍການບໍລິຈາກຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ ວ່າເປັນການເຮັດຕອບແທນກັນຂອງບຸກຄົນນີ້ກັບບຸກຄົນນີ້

## ການຖວາຍທານເຈາະຈົງບຸກຄົນ ໑໔ ປະການການ

[໓໗໙] ອານົນ ກໍທັກຂິນາເປັນປາຕິປຸກຄະລິກ (ການຖວາຍທານເຈາະຈົງບຸກຄົນ) ນີ້ ມີ ໑໔ ປະການ ທັກຂິນາເປັນປາຕິປຸກຄະລິກ ໑໔ ປະການ ອັນໃດແດ່ ຄື

໑. ບຸກຄົນຍ່ອມຖວາຍທານໃນ ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ນີ້ເປັນທັກຂິນາປາຕິປຸກຄະລິກປະການທີ ໑
໒. ບຸກຄົນຍ່ອມຖວາຍທານໃນ ພຣະປັດເຈກພຸດທະ ນີ້ເປັນທັກຂິນາປາຕິປຸກຄະລິກ ປະການທີ ໒
໓. ບຸກຄົນຍ່ອມຖວາຍທານໃນ ພຣະສາວົກຂອງຕະຖາຄົດ ຜູ້ເປັນພຣະອະຣະຫັນ ນີ້ເປັນທັກຂິນາປາຕິປຸກຄະລິກປະການທີ ໓
໔. ບຸກຄົນຍ່ອມຖວາຍທານໃນ ທ່ານຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ນີ້ເປັນທັກຂິນາປາຕິປຸກຄະລິກປະການທີ ໔
໕. ບຸກຄົນຍ່ອມຖວາຍທານໃນ ພຣະອະນາຄາມີ ນີ້ເປັນທັກຂິນາປາຕິປຸກຄະລິກ

ປະການທີ ໕

໖. ບຸກຄົນຍ່ອມຖວາຍທານໃນ ທ່ານຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ນີ້ເປັນທັກຂິນາປາຕິປຸກຄະລິກປະການທີ ໖

໗. ບຸກຄົນຍ່ອມຖວາຍ ທານໃນພຣະສະກະທາຄາມີ ນີ້ເປັນທັກຂິນາປາຕິປຸກຄະລິກປະການທີ ໗

໘. ບຸກຄົນຍ່ອມຖວາຍທານໃນ ທ່ານຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ນີ້ເປັນທັກຂິນາປາຕິປຸກຄະລິກປະການທີ ໘

໙. ບຸກຄົນຍ່ອມຖວາຍທານໃນ ພຣະໂສດາບັນ ນີ້ເປັນທັກຂິນາປາຕິປຸກຄະລິກປະການທີ ໙

໑໐. ບຸກຄົນຍ່ອມຖວາຍທານໃນ ທ່ານຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ນີ້ເປັນທັກຂິນາປາຕິປຸກຄະລິກປະການທີ ໑໐

໑໑. ບຸກຄົນຍ່ອມຖວາຍທານໃນ ບຸກຄົນພາຍນອກສາດສະໜາ ຜູ້ປາສະຈາກຄວາມກຳໜັດໃນກາມທັງຫລາຍແລ້ວ ນີ້ເປັນທັກຂິນາປາຕິປຸກຄະລິກປະການທີ ໑໑

໑໒. ບຸກຄົນຍ່ອມໃຫ້ທານໃນ ປຸຖຸຊົນຜູ້ມີສິນ[1] ນີ້ເປັນທັກຂິນາປາຕິປຸກຄະລິກປະການທີ ໑໒

໑໓. ບຸກຄົນຍ່ອມໃຫ້ທານໃນ ປຸຖຸຊົນຜູ້ທຸສິນ ນີ້ເປັນທັກຂິນາປາຕິປຸກຄະລິກປະການທີ ໑໓

໑໔. ບຸກຄົນຍ່ອມໃຫ້ທານໃນ ສັດເດຍຣັດສານ ນີ້ເປັນທັກຂິນາປາຕິປຸກຄະລິກປະການທີ ໑໔

ອານົນ ໃນທັກຂິນາປາຕິປຸກຄະລິກ ໑໔ ປະການນັ້ນ ບຸກຄົນໃຫ້ທານໃນສັດເດຍຣັດສານແລ້ວ ເພິ່ງຫວັງທັກຂິນາອັນມີອານິສົງ ໑໐໐ ອັດຕະພາບ ໃຫ້ທານໃນປຸຖຸຊົນຜູ້ທຸສິນແລ້ວເພິ່ງຫວັງທັກຂິນາອັນມີອານິສົງ ໑,໐໐໐ ອັດຕະພາບ ໃຫ້ທານໃນປຸຖຸຊົນຜູ້ມີສິນແລ້ວເພິ່ງຫວັງທັກຂິນາອັນມີອານິສົງ ໑໐໐,໐໐໐ ອັດຕະພາບ ຖວາຍທານໃນບຸກຄົນພາຍນອກສາດສະໜາຜູ້ປາສະຈາກຄວາມກຳໜັດໃນກາມທັງຫລາຍແລ້ວ ເພິ່ງຫວັງທັກຂິນາອັນມີອານິສົງແສນໂກຕິອັດຕະພາບ ໃຫ້ທານໃນທ່ານຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນແລ້ວ ເພິ່ງຫວັງທັກຂິນາອັນມີອານິສົງນັບບໍ່ໄດ້ ປະມານບໍ່ໄດ້ ບໍ່ຈຳເປັນຕ້ອງກ່າວເຖິງການຖວາຍທານໃນພຣະໂສດາບັນ ບໍ່ຈຳເປັນຕ້ອງກ່າວເຖິງການຖວາຍທານໃນທ່ານຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ບໍ່ຈຳເປັນຕ້ອງກ່າວເຖິງການຖວາຍທານໃນພຣະສະກະທາຄາມີ ບໍ່ຈຳເປັນຕ້ອງກ່າວເຖິງການຖວາຍທານໃນທ່ານຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ບໍ່ຈຳເປັນຕ້ອງກ່າວເຖິງການຖວາຍທານໃນພຣະອະນາຄາມີ ບໍ່ຈຳເປັນຕ້ອງກ່າວເຖິງການຖວາຍທານໃນທ່ານຜູ້ປະຕິບັດເພື່ອ

ເຮັດໃຫ້ແຈ້ງອະຣະຫັດຕະຜົນ ບໍ່ຈຳເປັນຕ້ອງກ່າວເຖິງການຖວາຍທານໃນພຣະສາວົກຂອງຕະຖາຄົດຜູ້ເປັນພຣະອະຣະຫັນ ບໍ່ຈຳເປັນຕ້ອງກ່າວເຖິງການຖວາຍທານໃນພຣະປັດເຈກສຳພຸດທະ ບໍ່ຈຳເປັນຕ້ອງກ່າວເຖິງການຖວາຍທານໃນພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າເລີຍ

## ການຖວາຍທານໃນສົງ ໗ ປະການ

[๓໗໐] ອານົນ ກໍທັກຂິນາທີ່ຖວາຍໃນສົງ ໗ ປະການນີ້

ທັກຂິນາທີ່ຖວາຍໃນສົງ ໗ ປະການ ອັນໃດແດ່ ຄື

໑. ບຸກຄົນຍ່ອມຖວາຍທານໃນສົງ ໒ ຝ່າຍມີພຣະພຸດທະເຈົ້າເປັນປະມຸກ ນີ້ ເປັນທັກຂິນາທີ່ຖວາຍໃນສົງປະການທີ ໑
໒. ເມື່ອພຣະຕະຖາຄົດປະຣິນິບພານໄປແລ້ວ ບຸກຄົນຍ່ອມຖວາຍທານໃນສົງ ໒ ຝ່າຍ ນີ້ ເປັນທັກຂິນາທີ່ຖວາຍໃນສົງປະການທີ ໒
໓. ບຸກຄົນຍ່ອມຖວາຍທານໃນພິກຂຸສົງ ນີ້ ເປັນທັກຂິນາທີ່ຖວາຍໃນສົງປະການທີ ໓
໔. ບຸກຄົນຍ່ອມຖວາຍທານໃນພິກຂຸນີສົງ ນີ້ ເປັນທັກຂິນາທີ່ຖວາຍໃນສົງປະການທີ ໔
໕. ບຸກຄົນບອກໃຫ້ສົງວ່າ “ຂໍທ່ານຈົ່ງໃຫ້ພິກຂຸ ແລະ ພິກຂຸນີຈຳນວນທໍ່ນີ້ ແກ່ຂ້າພະເຈົ້າເຈາະຈົງຈາກສົງ” ແລ້ວຖວາຍທານ ນີ້ ເປັນທັກຂິນາທີ່ຖວາຍໃນສົງປະການທີ ໕
໖. ບຸກຄົນບອກໃຫ້ສົງວ່າ “ຂໍທ່ານຈົ່ງໃຫ້ພິກຂຸຈຳນວນທໍ່ນີ້ ແກ່ຂ້າພະເຈົ້າເຈາະຈົງຈາກສົງ” ແລ້ວຖວາຍທານ ນີ້ເປັນທັກຂິນາທີ່ຖວາຍໃນສົງປະການທີ ໖
໗. ບຸກຄົນບອກໃຫ້ສົງວ່າ “ຂໍທ່ານຈົ່ງໃຫ້ພິກຂຸນີຈຳນວນທໍ່ນີ້ ແກ່ຂ້າພະເຈົ້າເຈາະຈົງຈາກສົງ” ແລ້ວຖວາຍທານ ນີ້ ເປັນທັກຂິນາທີ່ຖວາຍໃນສົງປະການທີ ໗

ອານົນ ກໍໃນອະນາຄົດຕະການ ຈັກມີແຕ່ເຫຼົ່າໂຄຕະຣະພູພິກຂຸ ມີຜ້າກາສາວະພັນຄໍ ເປັນຜູ້ທຸສີນ ມີທຳຊົ່ວຊາມ ຊົນທັງຫລາຍ ຈັກຖວາຍທານເຈາະຈົງພຣະສົງໄດ້ໃນພິກຂຸຜູ້ທຸສີນເຫຼົ່ານັ້ນ ແມ່ນໃນເວລານັ້ນ ເຮົາກໍຍັງກ່າວທັກຂິນາທີ່ຖວາຍໃນສົງວ່າ ມີອານິສົງນັບບໍ່ໄດ້ ປະມານບໍ່ໄດ້ ແຕ່ວ່າເຮົາບໍ່ກ່າວປາຕິປຸກຄະລິກທານວ່າ ມີຜົນຫລາຍກວ່າທັກຂິນາທີ່ຖວາຍໃນສົງໂດຍປະຣິຍາຍໃດ ໆ ເລີຍ

[໓໗໑] ອານົນ ຄວາມບໍລິສຸດແຫ່ງທັກຂິນາ(ຂອງທຳບຸນ) ໔ ປະການນີ້

ຄວາມບໍລິສຸດແຫ່ງທັກຂິນາ ໔ ປະການ ອັນໃດແດ່ ຄື

໑. ທັກຂິນາທີ່ບໍລິສຸດຝ່າຍທາຍົກ (ຜູ້ໃຫ້) ແຕ່ບໍ່ບໍລິສຸດຝ່າຍປະຕິຄາຫົກ (ຜູ້ຮັບ)
໒. ທັກຂິນາທີ່ບໍລິສຸດຝ່າຍປະຕິຄາຫົກ ແຕ່ບໍ່ບໍລິສຸດຝ່າຍທາຍົກ
໓. ທັກຂິນາທີ່ບໍ່ບໍລິສຸດ ທັງຝ່າຍທາຍົກແລະຝ່າຍປະຕິຄາຫົກ
໔. ທັກຂິນາທີ່ບໍລິສຸດ ທັງຝ່າຍທາຍົກແລະຝ່າຍປະຕິຄາຫົກ

ທັກຂິນາທີ່ບໍລິສຸດຝ່າຍທາຍົກ ແຕ່ບໍ່ບໍລິສຸດຝ່າຍປະຕິຄາຫົກ ເປັນແນວໃດ?

ຄື ທາຍົກໃນໂລກນີ້ເປັນຜູ້ມີສິນ ມີກັນລະຍານະທຳ ປະຕິຄາຫົກເປັນຜູ້ທຸສິນ ມີທຳຊົ່ວຊາມ ທັກຂິນາທີ່ບໍລິສຸດຝ່າຍທາຍົກ ແຕ່ບໍ່ບໍລິສຸດຝ່າຍປະຕິຄາຫົກ ເປັນແນວນີ້

ທັກຂິນາທີ່ບໍລິສຸດຝ່າຍປະຕິຄາຫົກ ແຕ່ບໍ່ບໍລິສຸດຝ່າຍທາຍົກ ເປັນແນວໃດ?

ຄື ທາຍົກໃນໂລກນີ້ເປັນຜູ້ທຸສິນ ມີທຳຊົ່ວຊາມ ປະຕິຄາຫົກເປັນຜູ້ມີສິນ ມີກັນລະຍານະທຳ ທັກຂິນາທີ່ບໍລິສຸດຝ່າຍປະຕິຄາຫົກ ແຕ່ບໍ່ບໍລິສຸດຝ່າຍທາຍົກ ເປັນແນວນີ້

ທັກຂິນາທີ່ບໍ່ບໍລິສຸດທັງຝ່າຍທາຍົກ ແລະ ຝ່າຍປະຕິຄາຫົກ ເປັນແນວໃດ?

ຄື ທາຍົກໃນໂລກນີ້ ເປັນຜູ້ທຸສິນ ມີທຳຊົ່ວຊາມ ແລະ ປະຕິຄາຫົກກໍເປັນຜູ້ທຸສິນ ມີທຳຊົ່ວຊາມ ທັກຂິນາທີ່ບໍ່ບໍລິສຸດທັງຝ່າຍທາຍົກແລະຝ່າຍປະຕິຄາຫົກ ເປັນແນວນີ້

ທັກຂິນາທີ່ບໍລິສຸດທັງຝ່າຍທາຍົກ ແລະ ຝ່າຍປະຕິຄາຫົກ ເປັນແນວໃດ?

ຄື ທາຍົກໃນໂລກນີ້ ເປັນຜູ້ມີສິນ ມີກັນລະຍານະທຳ ແລະ ປະຕິຄາຫົກກໍເປັນຜູ້ມີສິນມີກັນລະຍານະທຳ ທັກຂິນາທີ່ບໍລິສຸດທັງຝ່າຍທາຍົກ ແລະ ຝ່າຍປະຕິຄາຫົກ ເປັນແນວນີ້

ອານົນ ຄວາມບໍລິສຸດແຫ່ງທັກຂິນາ ໔ ປະການນີ້”[1]

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາ ເມື່ອຕັດເວີຍຍາກະຣະໜະພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນອື່ນອີກຕໍ່ໄປ ວ່າ

[໓໗໒] “ຜູ້ໃດມີສິນ ໄດ້ຂອງມາໂດຍທຳ ມີຈິດເຫຼື້ອມໃສດີ
ເຊື່ອກຳແລະຜົນແຫ່ງກຳອັນໂອລານ ໃຫ້ທານໃນຊົນຜູ້ທຸສິນ
ທັກສິນາຂອງຜູ້ນັ້ນຊື່ວ່າບໍລິສຸດຝ່າຍທາຍົກ

ຜູ້ໃດທຸສິນ ໄດ້ຂອງມາໂດຍບໍ່ເປັນທຳ ມີຈິດບໍ່ເຫຼື້ອມໃສ
ບໍ່ເຊື່ອກຳແລະຜົນຂອງກຳອັນໂອລານ ໃຫ້ທານໃນຊົນຜູ້ມີສິນ
ທັກສິນາຂອງຜູ້ນັ້ນຊື່ວ່າບໍລິສຸດຝ່າຍປະຕິຄາຫົກ

ຜູ້ໃດທຸສິນ ໄດ້ຂອງມາໂດຍບໍ່ເປັນທຳ ມີຈິດບໍ່ເຫຼື້ອມໃສ
ບໍ່ເຊື່ອກຳແລະຜົນຂອງກຳອັນໂອລານ ໃຫ້ທານໃນຊົນຜູ້ທຸສິນ

ເຮົາບໍ່ກ່າວທານຂອງຜູ້ນັ້ນວ່າມີຜົນໄພບູນ
ຜູ້ໃດມີສີນ ໄດ້ຂອງມາໂດຍທຳ ມີຈິດເຫຼື້ອມໃສດີ
ເຊື່ອກຳແລະຜົນຂອງກຳອັນໂອລານ ໃຫ້ທານໃນຊົນຜູ້ມີສີນ
ເຮົາກ່າວທານຂອງຜູ້ນັ້ນວ່າມີຜົນໄພບູນ
ຜູ້ໃດປາສະຈາກຣາຄະແລ້ວ ໄດ້ຂອງມາໂດຍທຳ
ມີຈິດເຫຼື້ອມໃສດີ ເຊື່ອກຳແລະຜົນຂອງກຳອັນໂອລານ
ຈຶ່ງໃຫ້ທານໃນທ່ານຜູ້ປາສະຈາກຣາຄະ
ເຮົາກ່າວ ທານຂອງຜູ້ນັ້ນ ໆ ເອງວ່າ
ເລີດກວ່າອາມິດສະທານທັງຫຼາຍ" ດັ່ງນີ້ແລ

**ທັກຂິນາວິພັງຄະສູດທີ ໑໒ ຈົບ**

**ວິພັງຄະວັກທີ ໔ ຈົບ**

## ລວມພຣະສູດໃນວັກນີ້ ຄື

໑ ພັດເທກະຣັດຕະສູດ
໒. ອານັນທະພັດເທກະຣັດຕະສູດ
໓. ມະຫາກັດຈານະພັດເທກະຣັດຕະສູດ
໔. ໂລມະສະກັງຄິຍະພັດເທກະຣັດຕະສູດ
໕. ຈູລະກຳມະວິພັງຄະສູດ
໖. ມະຫາກຳມະວິພັງຄະສູດ
໗. ສະລາຍະຕະນະວິພັງຄະສູດ
໘. ອຸດເທດວິພັງຄະສູດ
໙. ອະຣະນະວິພັງຄະສູດ
໑໐. ທາດວິພັງຄະສູດ
໑໑. ສັດຈະວິພັງຄະສູດ
໑໒. ທັກຂິນາວິພັງຄະສູດ

# ໔. ສະລາຍະຕະນະວັກ

## ໝວດວ່າດ້ວຍອາຍະຕະນະ ໖ ປະການ

## ໑. ອະນາຖະປິນດິໂກວາທະສູດ

### ວ່າດ້ວຍການໃຫ້ໂອວາດແກ່ອະນາຖະບິນດິກະຄະຫະບໍດີ

[໓໙໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນແລ ອະນາຖະບິນດິກະຄະຫະບໍດີປ່ວຍ ໄດ້ຮັບທຸກ ເປັນໄຂ້ໜັກ ດັ່ງນັ້ນ ທ່ານອະນາຖະບິນດິກະຄະຫະບໍດີຮຽກບຸຣຸດຄົນໜຶ່ງມາສັ່ງວ່າ

"ມາເທີ້ນ ທ້າວເອີຍ ເຈົ້າຈົ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍຂະໜ່ອມຕາມຄຳຂອງເຮົາ ແລ້ວຂາບທູນແນວນີ້ວ່າຂ້າແດ່ພຣະອົງຜູ້ຈະເລີນ ອະນາຖະບິນດິກະຄະຫະບໍດີປ່ວຍ ໄດ້ຮັບທຸກ ເປັນໄຂ້ໜັກ ທ່ານຂໍຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍຂະໜ່ອມແລະຈົ່ງເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ຂາບຕີນທັງສອງຂອງທ່ານດ້ວຍຂະໜ່ອມຕາມຄຳຂອງເຮົາ ຈົ່ງຮຽນແນວນີ້ວ່າ ທ່ານຜູ້ຈະເລີນ ອະນາຖະບິນດິກະຄະຫະບໍດີປ່ວຍ ໄດ້ຮັບທຸກ ເປັນໄຂ້ໜັກ ທ່ານຂໍຂາບຕີນທັງສອງຂອງທ່ານພຣະສາຣີບຸດດ້ວຍຂະໜ່ອມ ແລະ ຈົ່ງຮຽນແນວນີ້ວ່າຂໍທ່ານພຣະສາຣີບຸດໂຜດອະນຸເຄາະ ເຂົ້າໄປຢ້ຽມທ່ານອະນາຖະບິນດິກະຄະຫະບໍດີເຖິງນິເວດດ້ວຍເທີ້ນ"

ເມື່ອແລ້ວ ບຸຣຸດນັ້ນ ຮັບຄຳແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານອະນາຖະບິນດິກະຄະຫະບໍດີປ່ວຍ ໄດ້ຮັບທຸກ ເປັນໄຂ້ໜັກ ທ່ານຂໍຖວາຍບັງຄົມພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ" ແລະ ເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄຫວ້ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນທ່ານພຣະສາຣີບຸດດັ່ງນີ້ວ່າ "ທ່ານຜູ້ຈະເລີນ ທ່ານອະນາຖະບິນດິກະຄະຫະບໍດີປ່ວຍ ໄດ້ຮັບທຸກ ເປັນໄຂ້ໜັກ ທ່ານຂໍຂາບຕີນທັງສອງຂອງທ່ານພຣະສາຣີບຸດດ້ວຍຂະໜ່ອມ ແລະ ຝາກມາຮຽນວ່າຂໍທ່ານພຣະສາຣີບຸດໂຜດອະນຸເຄາະ ເຂົ້າໄປຢ້ຽມທ່ານອະນາຖະບິນດິກະຄະຫະບໍດີເຖິງນິເວດດ້ວຍເທີ້ນ"

ເມື່ອແລ້ວ ທ່ານພຣະສາຣີບຸດຮັບນິມົນໂດຍດຸດສະນີພາບ

[໓໗໔] ຄັ້ງນັ້ນ ທ່ານພຣະສາຣີບຸດຄອງອັນຕະຣະວາສົກຖືບາດແລະຈີວອນ ມີທ່ານພຣະອານົນເປັນປັດສາສະມະນະ ເຂົ້າໄປສູ່ນິເວດຂອງທ່ານອະນາຖະບິນດິກະຄະຫະບໍດີ ນັ່ງເທິງອາສະນະທີ່ປູລາດໄວ້ແລ້ວ ໄດ້ຖາມທ່ານອະນາຖະບິນດິກະຄະຫະບໍດີວ່າ "ຄະຫະບໍດີ ທ່ານຍັງສະບາຍດີຢູ່ບໍ? ຍັງພໍເປັນຢູ່ໄດ້ຢູ່ບໍ? ທຸກຂະເວທະນາຂອງທ່ານທຸເລົາລົງ ບໍ່ກຳເຣີບຂຶ້ນຢູ່ບໍ? ອາການທຸເລົາຜາກົດ ອາການກຳເຣີບບໍ່ຜາກົດແມ່ນບໍ?"[๑]

ທ່ານອະນາຖະບິນດິກະຄະຫະບໍດີຕອບວ່າ "ທ່ານສາຣີບຸດ ຂ້ານ້ອຍບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາຂອງຂ້ານ້ອຍກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດເລີຍ

ປຽບຄື ຄົນທີ່ແຂງແຮງໃຊ້ເຫຼັກແຫຼມຄົມສຽບແທງຫົວ ແມ່ນສັນໃດ ລົມອັນແຮງກ້າສຽບແທງຫົວຂອງຂ້ານ້ອຍຄືກັນສັນນັ້ນ ຂ້ານ້ອຍບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາຂອງຂ້ານ້ອຍກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການ ທຸເລົາບໍ່ຜາກົດ

ປຽບຄື ຄົນທີ່ແຂງແຮງໃຊ້ເຊືອກໜັງທີ່ໜຽວຂັນທີ່ຫົວ ແມ່ນສັນໃດ ລົມອັນແຮງກ້າສຽບແທງຫົວຂອງຂ້ານ້ອຍຄືກັນສັນນັ້ນ ຂ້ານ້ອຍບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາຂອງຂ້ ຂ້ານ້ອຍກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການ ທຸເລົາບໍ່ຜາກົດ ຂ້ານ້ອຍ

ປຽບຄື ຄົນຂ້າງົວຫຼືລູກມືຄົນຂ້າງົວຜູ້ຊ່ຽວຊານ ໃຊ້ມີດຄົວຊີ້ນທີ່ຄົມຂີດທ້ອງ ແມ່ນສັນໃດ ລົມອັນແຮງກ້າສຽບແທງທ້ອງຂອງຂ້ານ້ອຍຄືກັນສັນນັ້ນ

ຂ້ານ້ອຍບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາຂອງຂ້ານ້ອຍກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດເລີຍ

ປຽບຄື ຄົນທີ່ແຂງແຮງ ໒ ຄົນ ຈັບແຂນຄົນທີ່ອ່ອນແອກວ່າຄົນລະຂ້າງຂາງໃຫ້ຮ້ອນເທິງຂຸມຖ່ານໄຟ ແມ່ນສັນໃດ ອາການຮ້ອນຮົນໃນກາຍຂອງຂ້ານ້ອຍກໍມີຫຼາຍຢ່າງຍິ່ງ ຄືກັນສັນນັ້ນ

ທ່ານສາຣີບຸດ ຂ້ານ້ອຍບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາຂອງຂ້ານ້ອຍກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດ"[໔]

[໓໗໕] ທ່ານພຣະສາຣີບຸດກ່າວວ່າ "ຄະຫະບໍດີ ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຢຶດໝັ້ນຈັກຂຸ (๓๑) ແລະ ວິນຍານທີ່ອາໄສຈັກຂຸຂອງເຮົາກໍຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ແນວນີ້

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຢຶດໝັ້ນໂສຕະ (ຫູ) ແລະວິນຍານທີ່ອາໄສໂສຕະຂອງເຮົາກໍຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ແນວນີ້

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຢຶດໝັ້ນຄານະ (ດັງ) ແລະວິນຍານທີ່ອາໄສຄານະຂອງເຮົາກໍຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ແນວນີ້

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຢຶດໝັ້ນຊິວຫາ(ລີ້ນ) ແລະວິນຍານທີ່ອາໄສຊິວຫາຂອງເຮົາກໍຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ແນວນີ້

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຢຶດໝັ້ນກາຍ (ຮ່າງກາຍ) ແລະວິນຍານທີ່ອາໄສກາຍຂອງເຮົາກໍຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ແນວນີ້

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຢຶດໝັ້ນມະໂນ (ໃຈ) ແລະວິນຍານທີ່ອາໄສມະໂນຂອງເຮົາກໍຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ແນວນີ້ (໑)

ຄະຫະບໍດີ ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຢຶດໝັ້ນຮູບ ແລະວິນຍານທີ່ອາໄສຮູບຂອງເຮົາກໍຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ແນວນີ້

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຢຶດໝັ້ນ ສຽງ ຯລຯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຢຶດໝັ້ນ ກິ່ນ ຯລຯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຢຶດໝັ້ນ ຣົດ ຯລຯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຢຶດໝັ້ນໂຜດຖັບພະ ຯລຯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຢຶດໝັ້ນທຳມາຣົມ ແລະ ວິນຍານທີ່ອາໄສທຳມາຣົມຂອງເຮົາກໍຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ແນວນີ້ (໒)

ຄະຫະບໍດີ ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຢຶດໝັ້ນຈັກຂຸ ວິນຍານ ແລະ ວິນຍານທີ່ອາໄສຈັກຂຸວິນຍານຂອງເຮົາກໍຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ແນວນີ້

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຢຶດໝັ້ນໂສຕະວິນຍານ ຯລຯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຢຶດໝັ້ນຄານະວິນຍານ ຯລຯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຢຶດໝັ້ນຊິວຫາວິນຍານ ຯລຯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຍຶດໝັ້ນກາຍວິນຍານ ຯລຯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຍຶດໝັ້ນມະໂນວິນຍານ ແລະວິນຍານທີ່ອາໄສມະໂນວິນຍານຂອງເຮົາກໍຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ ແນວນີ້ (໓)

ຄະຫະບໍດີ ຍ້ອນເຫດນັ້ນແລ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຍຶດໝັ້ນ ຈັກຂຸສຳຜັດ ແລະ ວິນຍານທີ່ອາໄສຈັກຂຸສຳຜັດຂອງເຮົາກໍຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ແນວນີ້

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຍຶດໝັ້ນໂສຕະສຳຜັດ ຯລຯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຍຶດໝັ້ນຄານະສຳຜັດ ຯລຯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຍຶດໝັ້ນຊິວຫາສຳຜັດ ຯລຯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າເຮົາຈັກບໍ່ຍຶດໝັ້ນກາຍສຳຜັດ ຯລຯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າເຮົາຈັກບໍ່ຍຶດໝັ້ນມະໂນສຳຜັດ ແລະວິນຍານທີ່ອາໄສມະໂນສຳຜັດຂອງເຮົາກໍຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ແນວນີ້ (໔)

ຄະຫະບໍດີ ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າເຮົາຈັກບໍ່ຍຶດໝັ້ນເວທະນາທີ່ເກີດຈາກຈັກຂຸສຳຜັດ ແລະວິນຍານທີ່ອາໄສເວທະນາທີ່ເກີດຈາກຈັກຂຸສຳຜັດຂອງເຮົາກໍຈັກບໍ່ມີທ່ານເພິ່ງໃສ່ໃຈຮູ້ແນວນີ້

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າເຮົາຈັກບໍ່ຍຶດໝັ້ນ ເວທະນາທີ່ເກີດຈາກໂສຕະສຳຜັດ ຯລຯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າເຮົາຈັກບໍ່ຍຶດໝັ້ນ ເວທະນາທີ່ເກີດຈາກຄານະສຳຜັດ ຯລຯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າເຮົາຈັກບໍ່ຍຶດໝັ້ນ ເວທະນາທີ່ເກີດຈາກຊິວຫາສຳຜັດ ຯລຯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າເຮົາຈັກບໍ່ຍຶດໝັ້ນ ເວທະນາທີ່ເກີດຈາກກາຍສຳຜັດ ຯລຯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າເຮົາຈັກບໍ່ຍຶດໝັ້ນ ເວທະນາທີ່ເກີດຈາກມະໂນສຳຜັດ ແລະ ວິນຍານທີ່ອາໄສເວທະນາທີ່ເກີດຈາກມະໂນສຳຜັດຂອງເຮົາກໍຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ແນວນີ້ (໕)

[๓๕๗] ຄະຫະບໍດີ ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າເຮົາຈັກບໍ່ຍຶດໝັ້ນປະຖະວີທາດ ແລະ ວິນຍານທີ່ອາໄສປະຖະວີທາດຂອງເຮົາກໍຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ແນວນີ້

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຍຶດໝັ້ນ ອາໂປທາດ ฯລฯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຍຶດໝັ້ນ ເຕໂຊທາດ ฯລฯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຍຶດໝັ້ນ ວາໂຍທາດ ฯລฯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຍຶດໝັ້ນ ອາກາສທາດ ฯລฯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຍຶດໝັ້ນ ວິນຍານທາດ ແລະວິນຍານທີ່ອາໄສວິນຍານທາດຂອງເຮົາກໍຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ ແນວນີ້ (๗)

ຄະຫະບໍດີ ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າເຮົາຈັກບໍ່ຍຶດໝັ້ນຮູບ ແລະວິນຍານທີ່ອາໄສຮູບຂອງເຮົາກໍຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ແນວນີ້

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຍຶດໝັ້ນ ເວທະນາ ฯລฯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຍຶດໝັ້ນ ສັນຍາ ฯລฯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຍຶດໝັ້ນ ສັງຂານ ฯລฯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຍຶດໝັ້ນ ວິນຍານ ແລະ ວິນຍານທີ່ອາໄສວິນຍານຂອງເຮົາກໍຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ແນວນີ້ (ໆ)

ຄະຫະບໍດີ ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຍຶດໝັ້ນອາກາສານັນຈາຍະຕະນະຊານ ແລະ ວິນຍານທີ່ອາໄສອາກາສານັນຈາຍະຕະນະຊານຂອງເຮົາກໍຈັກບໍ່ມີທ່ານເພິ່ງໃສ່ໃຈຮູ້ແນວນີ້

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຍຶດໝັ້ນ ວິນຍານັນຈາຍະຕະນະຊານ ฯລฯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຍຶດໝັ້ນ ອາກິນຈັນຍາຍະຕະນະຊານ ฯລฯ

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ເຮົາຈັກບໍ່ຍຶດໝັ້ນ ເນວະສັນຍານາ

ສັນຍາຍະຕະນະຊານ ແລະ ວິນຍານທີ່ອາໄສເນວະສັນຍານາສັນຍາຍະຕະນະຊານຂອງເຮົາກໍ ຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ແນວນີ້ (໗)

ຄະຫະບໍດີ ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າເຮົາຈັກບໍ່ຍຶດໝັ້ນໂລກນີ້ ແລະວິນຍານທີ່ອາໄສໂລກນີ້ຂອງເຮົາກໍຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ແນວນີ້

ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າເຮົາຈັກບໍ່ຍຶດໝັ້ນໂລກໜ້າ ແລະວິນ ຍານທີ່ອາໄສໂລກໜ້າຂອງເຮົາກໍຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ແນວນີ້

ຄະຫະບໍດີ ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈຮູ້ໃນເລື້ອງນີ້ແນວນີ້ວ່າ ອາລົມໃດທີ່ເຮົາເຫັນ ຟັງ ຮູ້ ຮູ້ແຈ້ງ ສະແຫວງຫາ ໄດ້ພິຈາລະນາແລ້ວດ້ວຍໃຈ ເຮົາຈັກບໍ່ຍຶດໝັ້ນອາລົມແມ່ນນັ້ນ ແລະວິນຍານທີ່ອາໄສອາລົມນັ້ນຂອງເຮົາກໍຈັກບໍ່ມີ ທ່ານເພິ່ງໃສ່ໃຈຮູ້ແນວນີ້" (໘)

[໓໗໗] ເມື່ອທ່ານພຣະສາຣີບຸດກ່າວແນວນີ້ແລ້ວ ອະນາຖະບິນດິກະຄະຫະບໍດີໄດ້ຮ້ອງ ໄຫ້ ນ້ຳຕາໄຫຼ ຄັ້ງນັ້ນ ທ່ານພຣະອານົນ ໄດ້ຖາມທ່ານອະນາຖະບິນດິກະຄະຫະບໍດີວ່າ "ຄະຫະ ບໍດີ ທ່ານຍັງຍຶດຕິດຢູ່ຫຼືບໍ່?"

ອະນາຖະບິນດິກະຄະຫະບໍດີຕອບວ່າ "ທ່ານອານົນຜູ້ຈະເລີນ ຂ້າພະເຈົ້າບໍ່ໄດ້ຍຶດຕິດ ແຕ່ຂ້າພະເຈົ້າໄດ້ນັ່ງໃກ້ພຣະສາດສະດາ ແລະ ໝູ່ພິກຂຸທີ່ໜ້າຈະເລີນໃຈມາດົນແລ້ວ ແຕ່ ຂ້າພະເຈົ້າບໍ່ເຄີຍໄດ້ສະດັບທຳມີກະຖາປານນີ້ເລີຍ"

"ຄະຫະບໍດີ ທຳມີກະຖາປານນີ້ ບໍ່ແຈ້ງຊັດແກ່ຄະຫຼືຫັດຜູ້ນຸ່ງຂາວ ຫົ່ມຂາວ ແຕ່ແຈ້ງຊັດ ແກ່ບັນພະຊິດທັງຫລາຍ"

"ທ່ານພຣະສາຣີບຸດຜູ້ຈະເລີນ ຖ້າເຊັ່ນນັ້ນ ຂໍທຳມີກະຖາປານນີ້ ຈົ່ງແຈ້ງຊັດແກ່ຄະຫຼືຫັດ ຜູ້ນຸ່ງຂາວຫົ່ມຂາວແດ່ເທີ້ນ ຍ້ອນກຸນລະບຸດຜູ້ມີກິເລດຄືທຸລີໃນດວງຕານ້ອຍກໍມີຢູ່ ຍ້ອນບໍ່ໄດ້ຟັງ ທຳ ພວກເຂົາຈຶ່ງເສື່ອມ ແລະ ເປັນຜູ້ບໍ່ຮູ້ທຳ"

ຄັ້ງນັ້ນ ທ່ານພຣະສາຣີບຸດ ແລະ ທ່ານພຣະອານົນໄດ້ໂອວາດອະນາຖະບິນດິກະຄະຫະ ບໍດີດ້ວຍໂອວາດນີ້ແລ້ວ ລຸກຂຶ້ນຈາກອາສະນະແລ້ວຈາກໄປ

ເມື່ອທ່ານພຣະສາຣີບຸດ ແລະ ທ່ານພຣະອານົນຈາກໄປແລ້ວບໍ່ດົນ ອະນາຖະບິນດິກະ ຄະຫະບໍດີ ກໍໄດ້ເຮັດກາລະກິຣິຍາແລ້ວໄປເກີດໃນໝູ່ເທບຊັ້ນດຸສິດ ຄັ້ງນັ້ນ ອະນາຖະບິນດິກະ ເທບພະບຸດ ມີວັນນະງົດງາມຍິ່ງ ເມື່ອຣາຕີຜ່ານພົ້ນໄປ ເຮັດພຣະເຊຕະວັນທັງໝົດໃຫ້ສະຫວ່າງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ຢືນຢູ່ບ່ອນທີ່ສົມຄວນ ໄດ້ ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາເຫລົ່ານີ້ວ່າ

"ກໍພຣະເຊຕະວັນນີ້ ມີໝູ່ລືສີອາໄສຢູ່
ພຣະຜູ້ເປັນທຳມະຣາຊາກໍປະທັບຢູ່
ເປັນສະຖານທີ່ໃຫ້ເກີດປີຕິແກ່ຂ້າພຣະອົງ
ການງານ ໑ ວິດຊາ ໑ ທຳ ໑ ສີນ ໑ ຊີວິດອັນສູງສຸດ ໑
ສັດທັງຫຼາຍຍ່ອມບໍລິສຸດດ້ວຍທຳນີ້
ບໍ່ແມ່ນບໍລິສຸດດ້ວຍໂຄດຫຼືຊັບ
ຍ້ອນເຫດນັ້ນແລ ຄົນສະຫຼາດເມື່ອເຫັນປະໂຫຍດຕົນ
ຄວນຄັດເລືອກທຳໂດຍແຍບຄາຍເທີ້ນ
ຍ້ອນເມື່ອຄັດເລືອກແນວນີ້ ຍ່ອມມົດຈົດໃນທຳເຫຼົ່ານັ້ນ
ພຣະສາຣີບຸດທີ່ນັ້ນ ເປັນຜູ້ປະເສີດກວ່າພິກຂຸຜູ້ເຖິງຝັ່ງ
ດ້ວຍປັນຍາ ສີນ ແລະ ຄວາມສະງົບ"

ອະນາຖະບິນດິກະເທບພະບຸດໄດ້ຂາບທູນດັ່ງນີ້ແລ້ວ ພຣະສາດສະດາຊົງພໍພຣະຫະໄທ ລຳດັບນັ້ນ ອະນາຖະບິນດິກະເທບພະບຸດຮູ້ວ່າ "ພຣະສາດສະດາຊົງພໍພຣະຫະໄທ" ຈຶ່ງຖວາຍອະພິວາດ ທຳປະທັກຂິນແລ້ວຫາຍໂຕໄປຢູ່ບ່ອນນັ້ນເອງ

[໓໗໘] ຄັ້ງນັ້ນ ເມື່ອຣາຕີນັ້ນລ່ວງໄປແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫລາຍມາຕັດວ່າ "ພິກຂຸທັງຫລາຍ ເມື່ອຄືນນີ້ ເທບພະບຸດອົງໜຶ່ງ ມີວັນນະງົດງາມຍິ່ງ ເມື່ອຣາຕີຜ່ານພົ້ນໄປ ເຮັດພຣະເຊຕະວັນທັງໝົດໃຫ້ສະຫວ່າງ ເຂົ້າມາຫາເຮົາຮອດບ່ອນຢູ່ໄຫວ້ເຮົາແລ້ວ ຢືນຢູ່ທີ່ສົມຄວນ ໄດ້ກ່າວກັບເຮົາດ້ວຍຄາຖາເຫລົ່ານີ້ ວ່າ

"ກໍພຣະເຊຕະວັນນີ້ ມີໝູ່ລືສີອາໄສຢູ່
ພຣະຜູ້ເປັນທຳມະຣາຊາກໍປະທັບຢູ່
ເປັນສະຖານທີ່ໃຫ້ເກີດປີຕິແກ່ຂ້າພຣະອົງ
ການງານ ໑ ວິດຊາ ໑ ທຳ ໑ ສີນ ໑ ຊີວິດອັນສູງສຸດ ໑
ສັດທັງຫຼາຍຍ່ອມບໍລິສຸດດ້ວຍທຳນີ້
ບໍ່ແມ່ນບໍລິສຸດດ້ວຍໂຄດຫຼືຊັບ
ຍ້ອນເຫດນັ້ນແລ ຄົນສະຫຼາດເມື່ອເຫັນປະໂຫຍດຕົນ
ຄວນຄັດເລືອກທຳໂດຍແຍບຄາຍເທີ້ນ
ຍ້ອນເມື່ອຄັດເລືອກແນວນີ້ ຍ່ອມມົດຈົດໃນທຳເຫຼົ່ານັ້ນ
ພຣະສາຣີບຸດທີ່ນັ້ນ ເປັນຜູ້ປະເສີດກວ່າພິກຂຸຜູ້ເຖິງຝັ່ງ
ດ້ວຍປັນຍາ ສີນ ແລະ ຄວາມສະງົບ"

ພິກຂຸທັງຫລາຍ ເທບພະບຸດນັ້ນໄດ້ກ່າວດັ່ງນີ້ແລ້ວ ຮູ້ວ່າ ພຣະສາດສະດາຊົງພໍພຣະໄທ ເຮົາແລ້ວ ຈຶ່ງໄຫວ້ເຮົາ ທຳປະທັກສິນແລ້ວຫາຍໂຕໄປຈາກບ່ອນນັ້ນ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະອານົນໄດ້ຂາບທູນພຣະຜູ້ມີພຣະພາກດັ່ງນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ກໍເທບພະບຸດນັ້ນ ຕ້ອງເປັນອະນາຖະບິນດິກະເທບພະບຸດຢ່າງແນ່ນອນ ຍ້ອນອະນາຖະບິນດິກະຄະຫະບໍດີເຫຼື້ອມໃສແລ້ວໃນທ່ານພຣະສາຣີບຸດ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ອານົນ ເລື້ອງທີ່ທ່ານຄາດຄະເນນັ້ນ ທ່ານລຳດັບເລື້ອງຖືກແລ້ວ ເທບພະບຸດນັ້ນ ແມ່ນອະນາຖະບິນດິກະເທບພະບຸດ ບໍ່ແມ່ນໃຜອື່ນ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະອານົນມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ອະນາຖະປິນດິໂກວາທະສູດທີ ໑ ຈົບ**

# ໘. ສັນໂນວາທະສູດ[១]

## ວ່າດ້ວຍການໃຫ້ໂອວາດແກ່ພຣະສັນນະ

[໓໗໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ສະໄໝນັ້ນແລ ທ່ານພຣະສາຣີບຸດ ທ່ານພຣະມະຫາຈຸນທະ ແລະ ທ່ານພຣະສັນນະ[២]ຢູ່ທີ່ພູຄິດຊະກູດ ສະໄໝນັ້ນ ທ່ານພຣະສັນນະອາພາດ ໄດ້ຮັບທຸກ ເປັນໄຂ້ໜັກ ເມື່ອເວລາແລງ ທ່ານພຣະສາຣີບຸດອອກຈາກທີ່ຫຼີບຫຼີກ[៣]ແລ້ວເຂົ້າໄປຫາທ່ານພຣະມະຫາຈຸນທະຮອດບ່ອນຢູ່ ໄດ້ກ່າວກັບທ່ານພຣະມະຫາຈຸນທະດັ່ງນີ້ວ່າ "ມາເທີ້ນທ່ານຈຸນທະ ພວກເຮົາເຂົ້າໄປຖາມອາການອາພາດຂອງທ່ານພຣະສັນນະກັນເທີ້ນ" ເມື່ອທ່ານພຣະມະຫາຈຸນທະຮັບຄຳແລ້ວ

ລຳດັບນັ້ນ ທ່ານພຣະສາຣີບຸດ ແລະ ທ່ານພຣະມະຫາຈຸນທະເຂົ້າໄປຫາທ່ານພຣະສັນນະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ລະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນສົມຄວນ ທ່ານພຣະສາຣີບຸດໄດ້ຖາມທ່ານພຣະສັນນະດັ່ງນີ້ວ່າ "ທ່ານສັນນະ ທ່ານຍັງສະບາຍດີຢູ່ບໍ? ຍັງພໍເປັນຢູ່ໄດ້ບໍ? ທຸກຂະເວທະນາຂອງທ່ານທຸເລົາລົງ ບໍ່ກຳເຣີບຂຶ້ນບໍ ອາການທຸເລົາຜາກົດ ອາການກຳເຣີບບໍ່ຜາກົດບໍ"[៤]

ທ່ານພຣະສັນນະຕອບວ່າ "ທ່ານສາຣີບຸດ ຂ້ານ້ອຍບໍ່ສະບາຍ ຈະເປັນຢູ່ບໍ່ໄດ້

ທຸກຂະເວທະນາຂອງຂ້ານ້ອຍກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດ

ປຽບຄື ຄົນທີ່ແຂງແຮງໃຊ້ເຫຼັກແຫຼມຄົມສຽບແທງຫົວ ແມ່ນສັນໃດ ລົມອັນແຮງກ້າສຽບແທງຫົວຂອງຂ້ານ້ອຍຄືກັນສັນນັ້ນ ຂ້ານ້ອຍບໍ່ສະບາຍ ຈະເປັນຢູ່

ບໍ່ໄດ້ ທຸກຂະເວທະນາຂອງຂ້ານ້ອຍກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດ

ປຽບຄື ຄົນທີ່ແຂງແຮງໃຊ້ເຊືອກໜັງທີ່ໜຽວຂັນທີ່ຫົວ ແມ່ນສັນໃດ ລົມອັນແຮງກ້າສຽບແທງຫົວຂອງຂ້າພະເຈົ້າຄືກັນສັນນັ້ນ ຂ້ານ້ອຍບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາຂອງຂ້ານ້ອຍກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການ ທຸເລົາບໍ່ຜາກົດ

ປຽບຄື ຄົນຂ້າງົວຫຼືລູກມືຄົນຂ້າງົວຜູ້ຊ່ຽວຊານ ໃຊ້ມີດຄົວຊີ້ນທີ່ຄົມຂີດທ້ອງ ແມ່ນສັນໃດ ລົມອັນແຮງກ້າສຽບແທງທ້ອງຂອງຂ້ານ້ອຍຄືກັນສັນນັ້ນ ຂ້ານ້ອຍບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາຂອງຂ້ານ້ອຍກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດ

ປຽບຄື ຄົນທີ່ແຂງແຮງ ໒ ຄົນ ຈັບແຂນຄົນທີ່ອ່ອນແອກວ່າຄົນລະຂ້າງຂາງໃຫ້ຮ້ອນເທິງຂຸມຖ່ານໄຟ ແມ່ນສັນໃດ ອາການຮ້ອນຮົນໃນກາຍຂອງຂ້ານ້ອຍກໍມີຫຼາຍຍ່າງຍິ່ງ ຄືກັນສັນນັ້ນ ທ່ານສາຣີບຸດ ຂ້ານ້ອຍບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາຂອງຂ້ານ້ອຍກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດ

ທ່ານສາຣີບຸດ ຂ້ານ້ອຍ ຈັກນຳອາວຸດ[1]ມາ ຂ້ານ້ອຍບໍ່ຢາກມີຊີວິດຢູ່"

[໓໙໐] "ທ່ານສັນນະຢ່ານຳອາວຸດມາ ທ່ານຈົ່ງຖືຮັກສາໂຕໃຫ້ຢູ່ຕໍ່ໄປເທີ້ນ ພວກເຮົາຕ້ອງການໃຫ້ທ່ານ ຮັກສາໂຕຢູ່ຕໍ່ໄປ ຖ້າທ່ານສັນນະບໍ່ມີໂພຊະນະທີ່ເປັນສັບປາຍະ ຂ້ານ້ອຍຈັກສະແຫວງຫາມາໃຫ້ ຖ້າທ່ານສັນນະບໍ່ມີເພສັດທີ່ເປັນສັບປາຍະ ຂ້ານ້ອຍກໍຈັກສະແຫວງຫາມາໃຫ້ ຖ້າທ່ານສັນນະບໍ່ມີພວກອຸປັດຖາກຜູ້ເໝາະສົມ ຂ້ານ້ອຍຈັກອຸປັດຖາກເອງ ທ່ານສັນນະຢ່ານຳອາວຸດມາເລີຍ ຂໍທ່ານສັນນະຈົ່ງຮັກສາໂຕໃຫ້ຢູ່ຕໍ່ໄປເທີ້ນ ພວກເຮົາຕ້ອງການໃຫ້ທ່ານສັນນະຮັກສາໂຕຢູ່ຕໍ່ໄປ"

"ທ່ານສາຣີບຸດ ໂພຊະນະທີ່ເປັນສັບປາຍະຂອງຂ້ານ້ອຍບໍ່ແມ່ນບໍ່ມີ ເພສັດທີ່ເປັນສັບປາ

ຍະຂອງຂ້ານ້ອຍບໍ່ແມ່ນບໍ່ມີ ອຸປັດຖາກທີ່ເໝາະສົມຂອງຂ້ານ້ອຍບໍ່ແມ່ນບໍ່ມີ ອີກປະການໜຶ່ງ ຂ້ານ້ອຍກໍປົບນິບັດພຣະສາດສະດາດ້ວຍຄວາມເຕັມໃຈມາຕະຫຼອດ ບໍ່ແມ່ນປົບນິບັດດ້ວຍຄວາມບໍ່ເຕັມໃຈ ຂໍທ່ານສາຣີບຸດໂຜດຈື່ຂໍ້ຄວາມນີ້ໄວ້ແນວນີ້ເທີ້ນວ່າ ຂໍ້ທີ່ພຣະສາວົກປົບນິບັດພຣະສາດສະດາດ້ວຍຄວາມເຕັມໃຈ ບໍ່ແມ່ນປົບນິບັດດ້ວຍຄວາມບໍ່ເຕັມໃຈ ນີ້ ເປັນການສົມຄວນແກ່ພຣະສາວົກ ສັນນະພິກຂຸຈັກນໍາອາວຸດມາຈຶ່ງບໍ່ຄວນຖືກຕິຕຽນ"໔

"ພວກເຮົາຂໍຖາມບັນຫາບາງຂໍ້ກັບທ່ານສັນນະ ຖ້າທ່ານສັນນະຈະໃຫ້ໂອກາດຕອບບັນຫາ"

"ທ່ານສາຣີບຸດ ນິມົນຖາມມາເທີ້ນ ຂ້ານ້ອຍຟັງແລ້ວຈັກຕອບໃຫ້ຮູ້"

[໓໙໑] "ທ່ານສັນນະ ທ່ານພິຈາລະນາເຫັນຈັກຂຸ ຈັກຂຸວິນຍານ ແລະທໍາທີ່ເພິ່ງຮູ້ແຈ້ງທາງຈັກຂຸວິນຍານວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ພິຈາລະນາເຫັນໂສຕະ ໂສຕະວິນຍານ ຯລຯ
ພິຈາລະນາເຫັນຄານະ ຄານະວິນຍານ ຯລຯ
ພິຈາລະນາເຫັນຊິວຫາ ຊິວຫາວິນຍານ ຯລຯ
ພິຈາລະນາເຫັນກາຍ ກາຍວິນຍານ ຯລຯ
ພິຈາລະນາເຫັນມະໂນ ມະໂນວິນຍານ ແລະທໍາທີ່ເພິ່ງຮູ້ແຈ້ງທາງມະໂນວິນຍານວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ ບໍ?"

"ທ່ານສາຣີບຸດ ຂ້ານ້ອຍພິຈາລະນາເຫັນຈັກຂຸ ຈັກຂຸວິນຍານ ແລະທໍາທີ່ເພິ່ງຮູ້ແຈ້ງທາງຈັກຂຸວິນຍານວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິຈາລະນາເຫັນໂສຕະ ໂສຕະວິນຍານ ຯລຯ
ພິຈາລະນາເຫັນຄານະ ຄານະວິນຍານ ຯລຯ
ພິຈາລະນາເຫັນຊິວຫາ ຊິວຫາວິນຍານ ຯລຯ
ພິຈາລະນາເຫັນກາຍ ກາຍວິນຍານ ຯລຯ
ພິຈາລະນາເຫັນມະໂນ ມະໂນວິນຍານ ແລະທໍາທີ່ເພິ່ງຮູ້ແຈ້ງທາງມະໂນວິນຍານວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ?"

[໓໙໔] "ທ່ານສັນນະ ທ່ານພິຈາລະນາເຫັນອັນໃດ ຮູ້ອັນໃດໃນຈັກຂຸ ໃນຈັກຂຸວິນຍານ ແລະໃນທໍາທີ່ເພິ່ງຮູ້ແຈ້ງທາງຈັກຂຸວິນຍານ ຈຶ່ງພິຈາລະນາເຫັນຈັກຂຸ ຈັກຂຸວິນຍານ ແລະທໍາທີ່ເພິ່ງຮູ້ແຈ້ງທາງຈັກຂຸວິນຍານວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິຈາລະນາເຫັນອັນໃດ? ຮູ້ອັນໃດໃນໂສຕະ ໃນໂສຕະວິນຍານ ຯລຯ

ພິຈາລະນາເຫັນອັນໃດ? ຮູ້ອັນໃດໃນຄານະ ໃນຄານະວິນຍານ ຯລຯ
ພິຈາລະນາເຫັນອັນໃດ? ຮູ້ອັນໃດໃນຊິວຫາ ໃນຊິວຫາວິນຍານ ຯລຯ
ພິຈາລະນາເຫັນອັນໃດ? ຮູ້ອັນໃດໃນກາຍ ໃນກາຍວິນຍານ ຯລຯ

ພິຈາລະນາເຫັນອັນໃດ ຮູ້ອັນໃດໃນມະໂນ ໃນມະໂນວິນຍານ ແລະໃນທຳທີ່ເພິ່ງຮູ້ແຈ້ງທາງມະໂນວິນຍານ ຈຶ່ງພິຈາລະນາເຫັນມະໂນ ມະໂນວິນຍານ ແລະທຳທີ່ເພິ່ງຮູ້ແຈ້ງທາງມະໂນວິນຍານວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ?"

"ທ່ານສາຣີບຸດ ຂ້າພະເຈົ້າພິຈາລະນາເຫັນຄວາມດັບ ຮູ້ຄວາມດັບໃນຈັກຂຸ ໃນຈັກຂຸວິນຍານແລະໃນທຳທີ່ເພິ່ງຮູ້ແຈ້ງທາງຈັກຂຸວິນຍານ ຈຶ່ງພິຈາລະນາເຫັນຈັກຂຸ ຈັກຂຸວິນຍານແລະທຳທີ່ເພິ່ງຮູ້ແຈ້ງທາງຈັກຂຸວິນຍານວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິຈາລະນາເຫັນຄວາມດັບ ຮູ້ຄວາມດັບໃນໂສຕະ ໃນໂສຕະວິນຍານ ຯລຯ
ພິຈາລະນາເຫັນຄວາມດັບ ຮູ້ຄວາມດັບໃນຄານະ ໃນຄານະວິນຍານ ຯລຯ
ພິຈາລະນາເຫັນຄວາມດັບ ຮູ້ຄວາມດັບໃນຊິວຫາ ໃນຊິວຫາວິນຍານ ຯລຯ
ພິຈາລະນາເຫັນຄວາມດັບ ຮູ້ຄວາມດັບໃນກາຍ ໃນກາຍວິນຍານ ຯລຯ

ພິຈາລະນາເຫັນຄວາມດັບ ຮູ້ຄວາມດັບໃນມະໂນ ໃນມະໂນວິນຍານ ແລະໃນທຳທີ່ເພິ່ງຮູ້ແຈ້ງທາງມະໂນວິນຍານ ຈຶ່ງພິຈາລະນາເຫັນມະໂນ ມະໂນວິນຍານ ແລະທຳທີ່ເພິ່ງຮູ້ແຈ້ງທາງມະໂນວິນຍານວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ?"

[໓໙໓] ເມື່ອທ່ານພຣະສັນນະກ່າວແນວນີ້ແລ້ວ ທ່ານພຣະມະຫາຈຸນທະໄດ້ກ່າວກັບທ່ານພຣະສັນນະດັ່ງນີ້ ວ່າ

"ທ່ານສັນນະ ຍ້ອນເຫດນີ້ແລ ແມ່ນການເຫັນນີ້ ກໍເປັນຄຳສອນຂອງພຣະຜູ້ມີພຣະພາກພຣະອົງນັ້ນ ທ່ານເພິ່ງໃສ່ໃຈໃຫ້ດີຢູ່ສະໝໍ່າສະເໝີ ບຸກຄົນຜູ້ມີຕັນຫາ ມານະ ແລະ ທິດຖິອາໄສຢູ່ ຍ່ອມມີຄວາມຫວັ່ນໄຫວ ບຸກຄົນຜູ້ບໍ່ມີຕັນຫາ ມານະ ແລະ ທິດຖິອາໄສຢູ່ ຍ່ອມບໍ່ມີຄວາມຫວັ່ນໄຫວ ເມື່ອບໍ່ມີຄວາມຫວັ່ນໄຫວ ກໍມີຄວາມສະງົບ[໑] ເມື່ອມີຄວາມສະງົບ ກໍບໍ່ມີຄວາມນ້ອມໄປ[໒] ເມື່ອບໍ່ມີຄວາມນ້ອມໄປ ການມາແລະການໄປ[໓] ກໍບໍ່ມີ ເມື່ອບໍ່ມີການມາແລະການໄປ ຄວາມຕາຍແລະຄວາມເກີດກໍບໍ່ມີ ເມື່ອບໍ່ມີຄວາມຕາຍແລະຄວາມເກີດ ໂລກນີ້ໂລກໜ້າກໍບໍ່ມີ ລະຫວ່າງໂລກທັງສອງກໍບໍ່ມີ ນີ້ແລ ເປັນທີ່ສຸດແຫ່ງທຸກ"

ເມື່ອທ່ານພຣະສາຣີບຸດ ແລະ ທ່ານພຣະມະຫາຈຸນທະສອນທ່ານພຣະສັນນະດ້ວຍໂອວາດນີ້ແລ້ວ ກໍລຸກຂຶ້ນຈາກອາສະນະແລ້ວຈາກໄປ ເມື່ອທ່ານພຣະສາຣີບຸດ ແລະ ທ່ານພຣະມະຫາຈຸນທະຈາກໄປບໍ່ດົນ ທ່ານພຣະສັນນະກໍໄດ້ນຳອາວຸດມາ[໔]

[໓໘໔] ຄັ້ງນັ້ນແລ ທ່ານພຣະສາຣີບຸດເຂົ້າໄປເຝົ້າ ພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານສັນນະໄດ້ນຳອາວຸດມາ ທ່ານມີຄະຕິເປັນແນວໃດ? ມີອະພິສຳປະຣາຍະ ພົບ ເປັນແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ສາຣີບຸດ ສັນນະພິກຂຸໄດ້ບອກວ່າ ຈະບໍ່ຖືກຕິຕຽນ ໄວ້ຕໍ່ໜ້າທ່ານແລ້ວບໍ່ແມ່ນບໍ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ມີໝູ່ບ້ານຊາວວັດຊີຊື່ ປຸບພະຊິຣະ ໃນໝູ່ບ້ານນັ້ນ ຕະກູນທີ່ ເປັນມິດ ຕະກູນທີ່ເປັນສະຫາຍ ເປັນຕະກູນທີ່ທ່ານສັນນະເຂົ້າໄປອາໄສກໍມີຢູ່"

"ສາຣີບຸດ ຕະກູນທີ່ເປັນມິດຕະກູນທີ່ເປັນສະຫາຍເຫຼົ່ານັ້ນ ເປັນຕະກູນທີ່ສັນນະພິກຂຸເຂົ້າ ໄປອາໄສມີຢູ່ ແຕ່ເຮົາບໍ່ກ່າວວ່າ ສັນນະພິກຂຸມີຕະກູນທີ່ຕົນເພິ່ງເຂົ້າໄປອາໄສດ້ວຍເຫດພຽງທໍ່ນີ້ ທ່ານຈົ່ງຈື່ຂໍ້ຄວາມນີ້ໄວ້ແນວນີ້ເທີ້ນວ່າ ເຮົາກ່າວເຖິງພິກຂຸທີ່ລະກາຍນີ້ເຂົ້າຖືກາຍອື່ນ ວ່າມີຕະກູນ ທີ່ຕົນເພິ່ງເຂົ້າໄປອາໄສ ຕະກູນນັ້ນບໍ່ມີສຳລັບສັນນະພິກຂຸ ສັນນະພິກຂຸນຳອາວຸດມາຈຶ່ງບໍ່ຄວນ ຖືກຕິຕຽນ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະສາຣີບຸດມີໃຈຍິນດີ ຊົມຊື່ນພຣະ ພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ສັນໂນວາທະສູດທີ ໘ ຈົບ**

# ໙. ປຸນໂນວາທະສູດ

## ວ່າດ້ວຍການປະທານໂອວາດແກ່ພຣະປຸນນະ

[໓໘໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິ ກະເສດຖີ ເຂດນະຄອນສາວັດຖີ ເມື່ອເວລາແລງ ທ່ານພຣະປຸນນະອອກຈາກທີ່ຫຼີກຫຼີກເຂົ້າໄປ ເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນສົມຄວນ ໄດ້ຂາບທູນ ພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານພຣະວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດໂອວາດຂ້າພຣະອົງດ້ວຍພຣະໂອວາດໂດຍຫຍໍ້ ເຊິ່ງຂ້າພຣະອົງໄດ້ຟັງແລ້ວ ຈະເພິ່ງຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ປຸນນະ ຖ້າເຊັ່ນນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ເມື່ອທ່ານພຣະປຸນນະທູນຮັບສະໜອງພຣະດຳຣັດແລ້ວ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ປຸນນະ ຮູບທີ່ເພິ່ງຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸຍັງເພີດເພີນ ເຊີຍຊົມ ຢຶດຕິດຮູບນັ້ນຢູ່ ເມື່ອທ່ານເພີດເພີນ ເຊີຍຊົມ ຢຶດຕິດຮູບນັ້ນ ຄວາມເພີດເພີນຍ່ອມເກີດຂຶ້ນ ເຮົາກ່າວວ່າ ຍ້ອນຄວາມເພີດເພີນເກີດ ທຸກຈຶ່ງເກີດ[໒]

ສຽງ ທີ່ເພິ່ງຮູ້ແຈ້ງທາງຫູ ฯลฯ

ກິ່ນ ທີ່ເພິ່ງຮູ້ແຈ້ງທາງດັງ ฯลฯ

ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນ ฯลฯ

ໂຜດຖັບພະ ທີ່ເພິ່ງຮູ້ແຈ້ງທາງກາຍ ฯลฯ

ທຳມາຣົມ ທີ່ເພິ່ງຮູ້ແຈ້ງທາງໃຈ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸຍັງເພີດເພີນ ເຊີຍຊົມ ຢຶດຕິດທຳມາຣົມນັ້ນຢູ່ ເມື່ອທ່ານເພີດເພີນ ເຊີຍຊົມ ຢຶດຕິດທຳມາຣົມນັ້ນ ຄວາມເພີດເພີນຍ່ອມເກີດຂຶ້ນ ເຮົາກ່າວວ່າ ຍ້ອນຄວາມເພີດເພີນເກີດ ທຸກຈຶ່ງເກີດ

ຮູບ ທີ່ເພິ່ງຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດຮູບນັ້ນຢູ່ ເມື່ອທ່ານບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດຮູບນັ້ນ ຄວາມເພີດເພີນຍ່ອມດັບ ເຮົາກ່າວວ່າ ຍ້ອນຄວາມເພີດເພີນດັບ ທຸກຈຶ່ງດັບ

ສຽງ ທີ່ເພິ່ງຮູ້ແຈ້ງທາງຫູ ฯลฯ

ກິ່ນ ທີ່ເພິ່ງຮູ້ແຈ້ງທາງດັງ ฯลฯ

ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນ ฯลฯ

ໂຜດຖັບພະ ທີ່ເພິ່ງຮູ້ແຈ້ງທາງກາຍ ฯลฯ

ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດທຳມາຣົມນັ້ນຢູ່ ເມື່ອທ່ານບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດທຳມາຣົມນັ້ນ ຄວາມເພີດເພີນຍ່ອມດັບ ເຮົາກ່າວວ່າ ຍ້ອນຄວາມເພີດເພີນດັບ ທຸກຈຶ່ງດັບ

"ປຸນນະ ເຮົາໂອວາດທ່ານດ້ວຍໂອວາດໂດຍຫຍໍ້ນີ້ ທ່ານຈັກຢູ່ໃນຊົນນະບົດແຫ່ງໃດ?"

"ທ່ານພຣະປຸນນະຂາບທູນດັ່ງນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າ ໂອວາດຂ້າພຣະອົງດ້ວຍພຣະໂອວາດໂດຍຫຍໍ້ນີ້ແລ້ວ ຂ້າພຣະອົງ ຈັກຢູ່ໃນຊົນນະບົດຊື່ສຸນາປະ ຣັນຕະ"

[໓໙໑] "ປຸນນະ ພວກມະນຸດຊາວສຸນາປະຣັນຕະຊົນນະບົດ ເປັນຄົນດຸຮ້າຍຫຼາຍ ພວກ ມະນຸດຊາວສຸນາປະຣັນຕະຊົນນະບົດເປັນຄົນຫຍາບຄາຍຫຼາຍ ຖ້າພວກມະນຸດຊາວສຸນາປະຣັນ ຕະຊົນນະບົດຈັກດ່າ ຕຳໜິທ່ານ ໃນເລື້ອງນີ້ ທ່ານຈັກຄິດແນວໃດ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດຈັກດ່າ ຕຳ ໜິຂ້າພຣະອົງ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ວ່າ ມະນຸດຊາວສຸນາປະຣັນຕະຊົນນະບົດ ເຫຼົ່ານີ້ດີນໍ ມະນຸດຊາວສຸນາປະຣັນຕະຊົນນະບົດເຫຼົ່ານີ້ດີແທ້ນໍ ທີ່ບໍ່ຕີເຮົາດ້ວຍຝາມື ຂ້າແດ່ພຣະຜູ້ ມີພຣະພາກເຈົ້າ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ ຂ້າແດ່ພຣະສຸຄົດເຈົ້າ ໃນເລື້ອງນີ້ຂ້າພຣະ ອົງຈັກຄິດແນວນີ້"

"ປຸນນະ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດ ຈັກຕີທ່ານດ້ວຍຝາມື ໃນເລື້ອງນີ້ ທ່ານຈັກຄິດແນວໃດ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດຈັກຕີຂ້າພຣະ ອົງດ້ວຍຝາມື ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ວ່າ ມະນຸດຊາວສຸນາປະຣັນຕະຊົນນະບົດເຫຼົ່າ ນີ້ດີນໍ ມະນຸດຊາວສຸນາປະຣັນຕະຊົນນະບົດເຫຼົ່ານີ້ດີແທ້ນໍ ທີ່ບໍ່ປະຫານເຮົາດ້ວຍກ້ອນດິນ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ ຂ້າແດ່ພຣະສຸຄົດເຈົ້າ ໃນເລື້ອງນີ້ ຂ້າພຣະອົງຈັກຄິດແນວນີ້"

"ປຸນນະ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດ ຈັກປະຫານທ່ານດ້ວຍກ້ອນດິນ ໃນເລື້ອງນີ້ທ່ານຈັກຄິດແນວໃດ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດຈັກປະຫານຂ້າ ພຣະອົງດ້ວຍກ້ອນດິນ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ວ່າ ມະນຸດຊາວສຸນາປະຣັນຕະຊົນ ນະບົດເຫຼົ່ານີ້ດີນໍ ມະນຸດຊາວສຸນາປະຣັນຕະຊົນນະບົດເຫຼົ່ານີ້ດີແທ້ນໍ ທີ່ບໍ່ປະຫານເຮົາດ້ວຍໄມ້ ຄ້ອນ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ ຂ້າແດ່ ພຣະສຸຄົດ ເຈົ້າ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້"

"ປຸນນະ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດ ຈັກປະຫານທ່ານດ້ວຍໄມ້ຄ້ອນ ໃນເລື້ອງນີ້ທ່ານຈັກຄິດແນວໃດ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດຈັກປະຫານຂ້າພຣະອົງດ້ວຍໄມ້ຄ້ອນ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ວ່າ ມະນຸດຊາວສຸນາປະຣັນຕະຊົນນະບົດເຫຼົ່ານີ້ດີນໍ ມະນຸດຊາວສຸນາປະຣັນຕະຊົນນະບົດເຫຼົ່ານີ້ດີແທ້ນໍ ທີ່ບໍ່ປະຫານເຮົາດ້ວຍອາວຸດ ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ ຂ້າແດ່ພຣະສຸຄົດເຈົ້າໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້"

"ປຸນນະ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດ ຈັກປະຫານທ່ານດ້ວຍອາວຸດໃນເລື້ອງນີ້ທ່ານຈັກຄິດແນວໃດ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດຈັກປະຫານຂ້າພຣະອົງດ້ວຍອາວຸດ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ວ່າ ມະນຸດຊາວສຸນາປະຣັນຕະຊົນນະບົດເຫຼົ່ານີ້ດີນໍ ມະນຸດຊາວສຸນາປະຣັນຕະຊົນນະບົດເຫຼົ່ານີ້ດີແທ້ນໍ ທີ່ບໍ່ປົງຊີວິດເຮົາດ້ວຍອາວຸດທີ່ຄົມ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ ຂ້າແດ່ພຣະສຸຄົດເຈົ້າໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້"

"ປຸນນະ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດ ຈັກປົງຊີວິດທ່ານດ້ວຍອາວຸດທີ່ຄົມ ໃນເລື້ອງນີ້ທ່ານຈັກຄິດແນວໃດ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດຈັກປົງຊີວິດຂ້າພຣະອົງດ້ວຍອາວຸດທີ່ຄົມ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ວ່າ ພຣະສາວົກທັງຫຼາຍຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ອຶດອັດ ຣະອາ ລັງກຽດ ຮ່າງກາຍແລະຊີວິດ ຕ້ອງໄດ້ສະແຫວງຫາອາວຸດເຄື່ອງປົງຊີວິດກໍມີຢູ່ ແຕ່ເຮົານີ້ໄດ້ອາວຸດເຄື່ອງປົງຊີວິດທີ່ບໍ່ໄດ້ສະແຫວງຫາເລີຍ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ ຂ້າແດ່ພຣະສຸຄົດເຈົ້າ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້"

"ດີແລ້ວ ດີແລ້ວ ປຸນນະ ທ່ານປະກອບດ້ວຍຄວາມຂົ່ມໃຈ ແລະ ຄວາມສະງົບໃຈນີ້ຈັກສາມາດຢູ່ໃນສຸນາປະຣັນຕະຊົນນະບົດໄດ້ ປຸນນະ ທ່ານຈົ່ງຮູ້ເວລາອັນສົມຄວນໃນບັດນີ້ເທີ້ນ"

[໓໙໗] ຄັ້ງນັ້ນ ທ່ານພຣະປຸນນະຊົມຊື່ນ ຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວລຸກຂຶ້ນຈາກອາສະນະ ຖວາຍອະພິວາດ ທຳປະທັກຂິນ ເກັບມ້ຽນເສນາສະນະຮຽບຮ້ອຍແລ້ວຖືບາດແລະຈີວອນ ຫຼີກຈາຣິກໄປທາງສຸນາປະຣັນຕະຊົນນະບົດ ເມື່ອຈາຣິກໄປໂດຍລຳດັບກໍເຖິງສຸນາປະຣັນຕະຊົນນະບົດ

ໄດ້ຂ່າວວ່າ ທ່ານພຣະປຸນນະຢູ່ທີ່ສຸນາປະຣັນຕະຊົນນະບົດນັ້ນ ຄັ້ງນັ້ນ ລະຫວ່າງພັນສາ

ນັ້ນທ່ານໃຫ້ຊາວສຸນາປະຣັນຕະຊົນນະບົດ ສະແດງຕົນເປັນອຸປາສົກປະມານ ໕໐໐ ຄົນ ສະແດງຕົນເປັນອຸປາສິກາປະມານ ໕໐໐ ຄົນ ລະຫວ່າງພັນສານັ້ນຄືກັນ ທ່ານປຸນນະໄດ້ບັນລຸວິດຊາ໑ ໓ ລຳດັບນັ້ນ ໂດຍສະໄໝຕໍ່ມາ ກໍໄດ້ປະຣິນິບພານໄປ

ຄັ້ງນັ້ນແລ ພິກຂຸຈຳນວນຫຼາຍ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຂ້າແດ່ພຣະອົງຜູ້ຈະເລີນ ກຸນລະບຸດຊື່ປຸນນະທີ່ພຣະອົງຊົງໂອວາດດ້ວຍພຣະໂອວາດໂດຍຫຍໍ້ນັ້ນມໍຣະນະພາບແລ້ວ ເຂົາມີຄະຕິເປັນແນວໃດ? ມີອະພິສຳປະຣາຍະພົບເປັນແນວໃດ?”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ພິກຂຸທັງຫຼາຍ ກຸນລະບຸດຊື່ປຸນນະເປັນບັນດິດ ປະຕິບັດທຳສົມຄວນແກ່ທຳ ທັງບໍ່ບຽດບຽນເຮົາຍ້ອນເຫດແຫ່ງທຳ ພິກຂຸທັງຫຼາຍ ກຸນລະບຸດຊື່ປຸນນະປະຣິນິບພານແລ້ວ”

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນມີໃຈຍິນດີຕ່າງຊົມຊື່ນ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ປຸນໂນວາທະສູດທີ ໓ ຈົບ**

# ໔. ນັນທະໂກວາທະສູດ

## ວ່າດ້ວຍການໃຫ້ໂອວາດຂອງພຣະນັນທະກະ

[໓໙໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ພິກຂຸນີມະຫາປະຊາບໍດີໂຄຕະມີ ພ້ອມດ້ວຍພິກຂຸນີປະມານ ໕໐໐ ອົງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

“ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດປະທານພຣະໂອວາດສັ່ງສອນພິກຂຸນີທັງຫຼາຍ ໂຜດສະແດງທຳມີກະຖາແກ່ພິກຂຸນີທັງຫຼາຍດ້ວຍເທີ້ນ”

ສະໄໝນັ້ນແລ ພິກຂຸຜູ້ເຖຣະທັງຫຼາຍ ຍ່ອມໂອວາດພິກຂຸນີທັງຫຼາຍໂດຍວຽນກັນໄປ ແຕ່

ທ່ານພຣະນັນທະກະ ບໍ່ປາຖະໜາຈະໂອວາດພິກຂຸນີທັງຫຼາຍໂດຍວຽນກັນໄປ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກທ່ານພຣະອານົນມາຕັດຖາມວ່າ "ອານົນ ມື້ນີ້ ຝຽນໃຫ້ໂອວາດພິກຂຸນີວຽນມາເຖິງຜູ້ໃດນໍ?"

ທ່ານພຣະອານົນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຝຽນໃຫ້ໂອວາດພິກຂຸນີທັງຫຼາຍ ພິກຂຸທຸກອົງກະທຳແລ້ວໂດຍວຽນກັນໄປ ແຕ່ທ່ານພຣະນັນທະກະອົງນີ້ ບໍ່ປາຖະໜາຈະໃຫ້ໂອວາດພິກຂຸນີທັງຫຼາຍໂດຍວຽນກັນໄປ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກທ່ານພຣະນັນທະກະມາດ້ວຍຕັດວ່າ "ນັນທະກະ ທ່ານຈົ່ງໂອວາດສັ່ງສອນພິກຂຸນີທັງຫຼາຍ ພາມ ທ່ານຈົ່ງສະແດງທຳມີກະຖາແກ່ພິກຂຸນີທັງຫຼາຍເທີ້ນ"

ທ່ານພຣະນັນທະກະທູນຮັບສະໜອງພຣະດຳຣັດແລ້ວ ໃນເວລາເຊົ້າຈຶ່ງຄອງອັນຕະຣະວາສົກ ຖືບາດແລະຈີວອນ ເຂົ້າໄປບິນທະບາດໃນເມືອສາວັດຖີ ທ່ຽວບິນທະບາດໃນນະຄອນສາວັດຖີແລ້ວ ກັບຈາກບິນທະບາດ ພາຍຫຼັງສັນພັດຕາຫານສຳເລັດແລ້ວ ຜູ້ດຽວເຂົ້າໄປສູ່ຣາຊະກາຣາມ[១] ພິກຂຸນີເຫຼົ່ານັ້ນ ເຫັນທ່ານພຣະນັນທະກະຍ່າງມາແຕ່ໄກ ຈຶ່ງຊ່ອຍກັນປູລາດອາສະນະ ແລະຕັ້ງນ້ຳລ້າງຕີນໄວ້ ທ່ານພຣະນັນທະກະນັ່ງເທິງອາສະນະທີ່ປູລາດໄວ້ແລ້ວ ລ້າງຕີນ ແມ່ນພິກຂຸນີເຫຼົ່ານັ້ນ ກໍພາກັນຂາບທ່ານພຣະນັນທະກະແລ້ວນັ່ງຢູ່ບ່ອນສົມຄວນ

ທ່ານພຣະນັນທະກໍໄດ້ກ່າວກັບພິກຂຸນີເຫຼົ່ານັ້ນວ່າ "ນາງທັງຫຼາຍ ການຖາມຕອບກັນຈັກມີຂຶ້ນ ໃນການຖາມຕອບກັນນັ້ນ ນາງທັງຫຼາຍເມື່ອຮູ້ ເພິ່ງຕອບວ່າເຮົາທັງຫຼາຍຮູ້ ເມື່ອບໍ່ຮູ້ເພິ່ງຕອບວ່າເຮົາທັງຫຼາຍບໍ່ຮູ້ ຫຼື ນາງອົງໃດມີຄວາມເຄືອບແຄງ ຫຼື ຄວາມສົງໄສ ນາງອົງນັ້ນເພິ່ງຖາມອາຕະມາພາບໃນເລື້ອງນັ້ນວ່າ ຂ້າແດ່ ທ່ານຜູ້ຈະເລີນ ເລື້ອງນີ້ເປັນແນວໃດ? ເລື້ອງນີ້ມີເນື້ອຄວາມແນວໃດ?"

ພິກຂຸນີເຫຼົ່ານັ້ນກ່າວວ່າ "ຂ້າແດ່ ທ່ານຜູ້ຈະເລີນ ເຮົາທັງຫຼາຍມີໃຈຍິນດີຊົມຊື່ນພຣະຜູ້ເປັນເຈົ້ານັນທະກະ ດ້ວຍເຫດທີ່ພຣະຜູ້ເປັນເຈົ້ານັນທະກະປະວາຣະນາແກ່ເຮົາທັງຫຼາຍແນວນີ້"

[៣៧៧] ທ່ານພຣະນັນທະກະຖາມວ່າ "ນາງທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ຈັກຂຸທ່ຽງ ຫຼື ບໍ່ທ່ຽງ?"

ພິກຂຸນີເຫຼົ່ານັ້ນຕອບວ່າ "ບໍ່ທ່ຽງ ຂ້ານ້ອຍ"
"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ຫຼື ເປັນສຸກ?"
"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ "ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ"[໑]

"ທ່ານທັງຫຼາຍ ເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ໂສຕະທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ຯລຯ

"ຄານະທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ຯລຯ

"ຊິວຫາທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ຯລຯ

"ກາຍທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ຯລຯ

"ມະໂນທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ຯລຯ

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ຫຼື ເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່ານັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ"

"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນກ່ອນນີ້ ເຮົາທັງຫຼາຍໄດ້ເຫັນດີແລ້ວຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງ[໑]ວ່າ ອາຍະຕະນະພາຍໃນ ໖ ຂອງເຮົາ ບໍ່ທ່ຽງ ແມ່ນຍ້ອນເຫດນີ້ ຂ້ານ້ອຍ"

ທ່ານພຣະນັນທະກະກ່າວວ່າ "ດີແລ້ວ ດີແລ້ວ ນາງທັງຫຼາຍ ພຣະອະຣິຍະສາວິກາຜູ້ເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງ ຍ່ອມມີຄວາມເຫັນເລື້ອງນີ້ແນວນີ້"

[໔໐໐] "ນາງທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄືຮູບທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ"

"ນາງທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ສຽງທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ฯລฯ

"ກິ່ນທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ฯລฯ

"ຣົດທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ฯລฯ

"ໂຜດຖັບພະທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ฯລฯ

"ທຳມາຣົມທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ฯລฯ

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ" ฯລฯ

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່ານັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ"

"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນກ່ອນນີ້ ເຮົາທັງຫຼາຍໄດ້ເຫັນດີແລ້ວຕາມຄວາມເປັນຈິງ ດ້ວຍປັນຍາອັນຊອບວ່າ ອາຍະຕະນະພາຍນອກ ๖ ຂອງເຮົາ ບໍ່ທ່ຽງ ແມ່ນຍ້ອນເຫດນີ້ຂ້ານ້ອຍ"

ທ່ານພຣະນັນທະກະກ່າວວ່າ "ດີແລ້ວ ດີແລ້ວ ນາງທັງຫຼາຍ ພຣະອະຣິຍະສາວິກຜູ້ເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງ ຍ່ອມມີຄວາມເຫັນເລື້ອງນີ້ແນວນີ້ແລ"

[໔໐໑] "ນາງທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄືຈັກຂຸວິນຍານທ່ຽງບໍທ່ຽງ"

"ບໍ່ທ່ຽງ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່ານັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ"

"ນາງທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ໂສຕະວິນຍານທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ຯລຯ

"ຄານະວິນຍານທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ຯລຯ

"ຊິວຫາວິນຍານທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ຯລຯ

"ກາຍວິນຍານທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ຯລຯ

"ມະໂນວິນຍານທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທໍາມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່ານັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ"

"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນກ່ອນນີ້ ເຮົາທັງຫຼາຍໄດ້ເຫັນດີແລ້ວຕາມຄວາມເປັນຈິງດ້ວຍປັນຍາອັນຊອບວ່າໝວດວິນຍານ ໖ ຂອງເຮົາ ບໍ່ທ່ຽງ ແມ່ນຍ້ອນເຫດນີ້ຂ້ານ້ອຍ"

"ດີແລ້ວ ດີແລ້ວ ນາງທັງຫຼາຍ ພຣະອະຣິຍະສາວົກຜູ້ເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງ ຍ່ອມມີຄວາມເຫັນເລື້ອງນີ້ແນວນີ້ແລ

[໔໐໔] ນາງທັງຫຼາຍ ປຽບຄື ເມື່ອປະທີບນໍ້າມັນຖືກຈຸດໄວ້ ນໍ້າມັນກໍດີ ໄສ້ກໍດີ ນໍ້າໄຟກໍດີ ແສງສະຫວ່າງກໍດີ ລ້ວນບໍ່ທ່ຽງ ມີຄວາມຜັນແປເປັນທໍາມະດາ ຜູ້ໃດເພິ່ງກ່າວແນວນີ້ວ່າ ເມື່ອປະທີບນໍ້າມັນນັ້ນຖືກຈຸດໄວ້ ນໍ້າມັນກໍດີ ໄສ້ກໍດີ ນໍ້າໄຟກໍດີ ລ້ວນບໍ່ທ່ຽງ ມີຄວາມຜັນແປເປັນທໍາມະດາ ແຕ່ວ່າ ແສງສະຫວ່າງຂອງປະທີບນໍ້າມັນນັ້ນ ທ່ຽງ ໝັ້ນຍືນ ເປັນໄປຕິດຕໍ່ ມີຄວາມບໍ່ຜັນແປເປັນທໍາມະດາ ຜູ້ທີ່ກ່າວນັ້ນຊື່ວ່າ ເພິ່ງກ່າວຖືກບໍ?"

"ບໍ່ຖືກ ຂ້ານ້ອຍ"

"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນເມື່ອປະທີບນໍ້າມັນນັ້ນຖືກຈຸດໄວ້ ນໍ້າມັນກໍດີ ໄສ້ກໍດີ ນໍ້າໄຟກໍດີ ລ້ວນບໍ່ທ່ຽງ ມີ

ຄວາມຜັນແປເປັນທຳມະດາ ບໍ່ຈຳເປັນຕ້ອງເວົ້າເຖິງແສງສະຫວ່າງຂອງປະທີບນ້ຳມັນນັ້ນ ເຊິ່ງບໍ່ທ່ຽງ ມີຄວາມຜັນແປເປັນທຳມະດາເລີຍ ຂ້ານ້ອຍ"

"ຄືກັນສັນນັ້ນ ນາງທັງຫຼາຍ ບຸກຄົນໃດເພິ່ງກ່າວແບບນີ້ວ່າ ອາຍະຕະນະພາຍໃນ ໖ ຂອງເຮົານີ້ ບໍ່ທ່ຽງ ແຕ່ເຮົາອາໄສອາຍະຕະນະພາຍໃນ ໖ ແລ້ວ ຍ່ອມສະເຫວີຍເວທະນາໃດ ເປັນສຸກກໍຕາມ ເປັນທຸກກໍຕາມ ເປັນອະທຸກຂະມະສຸຂະກໍຕາມ ເວທະນານັ້ນ ທ່ຽງ ໝັ້ນຍືນ ເປັນໄປຕິດຕໍ່ ມີຄວາມບໍ່ຜັນແປເປັນທຳມະດາ ຜູ້ທີ່ກ່າວນັ້ນຊື່ວ່າ ເພິ່ງກ່າວຖືກບໍ?"

"ບໍ່ຖືກ ຂ້ານ້ອຍ"

"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນອາໄສປັດໄຈທີ່ເກີດຈາກອາຍະຕະນະພາຍໃນນັ້ນ ໆ ເວທະນາທີ່ເກີດຈາກອາຍະຕະນະພາຍໃນນັ້ນ ໆ ຈຶ່ງເກີດຂຶ້ນ ຍ້ອນປັດໄຈທີ່ເກີດຈາກອາຍະຕະນະພາຍໃນນັ້ນ ໆ ດັບເວທະນາທີ່ເກີດຈາກອາຍະຕະນະພາຍໃນນັ້ນ ໆ ຈຶ່ງດັບ"

"ດີແລ້ວ ດີແລ້ວ ນາງທັງຫຼາຍ ພຣະອະຣິຍະສາວົກຜູ້ເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງ ຍ່ອມມີຄວາມເຫັນເລື້ອງນີ້ແບບນີ້ແລ

[໔໐໓] ນາງທັງຫຼາຍ ປຽບຄື ຕົ້ນໄມ້ໃຫຍ່ປະເພດຢືນຕົ້ນມີແກ່ນ ມີຮາກ ລຳຕົ້ນ ງ່າແລະໃບ ແລະ ເງົາ ລ້ວນບໍ່ທ່ຽງ ມີຄວາມຜັນແປເປັນທຳມະດາ ຜູ້ໃດເພິ່ງກ່າວແບບນີ້ວ່າ ຕົ້ນໄມ້ໃຫຍ່ປະເພດຢືນຕົ້ນມີແກ່ນ ມີຮາກ ລຳຕົ້ນ ງ່າແລະໃບ ແລະ ເງົາ ລ້ວນບໍ່ທ່ຽງ ມີຄວາມຜັນແປເປັນທຳມະດາ ແຕ່ວ່າເງົາຂອງຕົ້ນໄມ້ນັ້ນທ່ຽງ ໝັ້ນຍືນ ເປັນໄປຕິດຕໍ່ ບໍ່ມີຄວາມຜັນແປເປັນທຳມະດາຜູ້ທີ່ກ່າວນັ້ນຊື່ວ່າ ເພິ່ງກ່າວຖືກບໍ?"

"ບໍ່ຖືກ ຂ້ານ້ອຍ"

"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນຕົ້ນໄມ້ໃຫຍ່ປະເພດຢືນຕົ້ນມີແກ່ນ ມີຮາກ ລຳຕົ້ນ ງ່າແລະໃບລ້ວນບໍ່ທ່ຽງ ມີຄວາມຜັນແປເປັນທຳມະດາ ບໍ່ຈຳເປັນຕ້ອງເວົ້າເຖິງເງົາຂອງຕົ້ນໄມ້ນັ້ນເຊິ່ງບໍ່ທ່ຽງ ມີຄວາມຜັນແປເປັນທຳມະດາເລີຍ ຂ້ານ້ອຍ"

"ຄືກັນສັນນັ້ນ ນາງທັງຫຼາຍ ບຸກຄົນໃດເພິ່ງກ່າວແບບນີ້ວ່າ ອາຍະຕະນະ ພາຍນອກ ໖ ຂອງເຮົາບໍ່ທ່ຽງ ແຕ່ເຮົາອາໄສອາຍະຕະນະພາຍນອກ ໖ ແລ້ວ ຍ່ອມສະເຫວີຍເວທະນາໃດ ເປັນສຸກກໍຕາມ ເປັນທຸກກໍຕາມ ເປັນອະທຸກຂະມະສຸຂະກໍຕາມ ເວທະນານັ້ນທ່ຽງ ໝັ້ນຍືນ ເປັນໄປຕິດຕໍ່ ມີຄວາມບໍ່ຜັນແປເປັນທຳມະດາ ຜູ້ທີ່ກ່າວນັ້ນຊື່ວ່າເພິ່ງກ່າວຖືກບໍ?"

"ບໍ່ຖືກ ຂ້ານ້ອຍ"

"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນອາໄສປັດໄຈທີ່ເກີດຈາກອາຍະຕະນະພາຍນອກນັ້ນ ໆ ເວທະນາທີ່ເກີດຈາກອາຍະຕະນະພາຍນອກນັ້ນ ໆ ຈຶ່ງເກີດຂຶ້ນ ຍ້ອນປັດໄຈທີ່ເກີດຈາກອາຍະຕະນະພາຍນອກນັ້ນ ໆ ດັບ ເວທະນາທີ່ເກີດຈາກອາຍະຕະນະພາຍນອກນັ້ນ ໆ ຈຶ່ງດັບ ຂ້ານ້ອຍ"

"ດີແລ້ວ ດີແລ້ວ ນາງທັງຫຼາຍ ພຣະອະຣິຍະສາວິກຜູ້ເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງ ຍ່ອມມີຄວາມເຫັນເລື້ອງນີ້ແນວນີ້ແລ

[໔໐໔] ນາງທັງຫຼາຍ ປຽບຄື ຄົນຂ້າງົວ ຫຼື ລູກມືຄົນຂ້າງົວຜູ້ຊ່ຽວຊານ ຂ້າງົວແມ່ແລ້ວໃຊ້ມີດຄົວຊີ້ນທີ່ຄົມປາດງົວແມ່ ແຍກສ່ວນຊີ້ນໄວ້ຂ້າງໃນ ແຍກສ່ວນໜັງໄວ້ຂ້າງນອກ ໃນສ່ວນຊີ້ນນັ້ນ ສ່ວນໃດ ໆ ເປັນຊີ້ນສັນ ເສັ້ນເອັນໃຫຍ່ ເສັ້ນເອັນນ້ອຍໃນພາຍໃນ ກໍໃຊ້ມີດແລ່ເນື້ອທີ່ຄົມຕັດຊໍາແຫລະປາດສ່ວນນັ້ນ ໆ ແລ້ວເລາະສ່ວນໜັງໄວ້ຂ້າງນອກ ໃຊ້ໜັງນັ້ນຄຸມແມ່ງົວນັ້ນໄວ້ແລ້ວເພິ່ງກ່າວແນວນີ້ວ່າ ແມ່ງົວໂຕນີ້ເຮົາປະກອບໄວ້ດ້ວຍໜັງຜືນນີ້ທໍ່ນັ້ນ ຄົນຂ້າງົວຫຼືລູກມືຄົນຂ້າງົວນັ້ນເມື່ອກ່າວ ຊື່ວ່າ ເພິ່ງກ່າວຊອບບໍ?"

"ບໍ່ມັກ ຂ້ານ້ອຍ"

"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນຄົນຂ້າງົວ ຫຼື ລູກມືຄົນຂ້າງົວຜູ້ຊ່ຽວຊານນັ້ນ ຂ້າແມ່ງົວແລ້ວ ໃຊ້ມີດແລ່ເນື້ອທີ່ຄົມຊໍາແຫລະແມ່ງົວ ແຍກສ່ວນຊີ້ນໄວ້ຂ້າງໃນ ແຍກສ່ວນໜັງໄວ້ຂ້າງນອກ ໃນສ່ວນຊີ້ນນັ້ນ ສ່ວນໃດ ໆ ເປັນຊີ້ນສັນ ເສັ້ນເອັນໃຫຍ່ ເສັ້ນເອັນນ້ອຍໃນພາຍໃນ ກໍໃຊ້ມີດແລ່ເນື້ອທີ່ຄົມຕັດຊໍາແຫລະປາດສ່ວນນັ້ນ ໆ ແລ້ວເລາະສ່ວນໜັງໄວ້ຂ້າງນອກ ໃຊ້ໜັງນັ້ນຄຸມແມ່ງົວນັ້ນໄວ້ ເພິ່ງກ່າວແນວນີ້ວ່າ ແມ່ງົວໂຕນີ້ເຮົາປະກອບໄວ້ດ້ວຍໜັງຜືນນີ້ທໍ່ນັ້ນ ກໍແມ່ນຢູ່ ເຖິງແນວນັ້ນ ແມ່ງົວນັ້ນກໍແຍກອອກຈາກໜັງຜືນນັ້ນແລ້ວ ຂ້ານ້ອຍ"

"ນາງທັງຫຼາຍ ອາຕະມາພາບເຮັດອຸປະມານີ້ ເພື່ອໃຫ້ເຂົ້າໃຈເນື້ອຄວາມຊັດເຈນຂຶ້ນເນື້ອຄວາມໃນອຸປະມານັ້ນດັ່ງຕໍ່ໄປນີ້

ຄໍາວ່າ ສ່ວນຊີ້ນຂ້າງໃນ ນັ້ນ ເປັນຊື່ຂອງອາຍະຕະນະພາຍໃນ ໖

ຄໍາວ່າ ສ່ວນໜັງຂ້າງນອກ ນັ້ນ ເປັນຊື່ຂອງອາຍະຕະນະພາຍນອກ ໖

ຄໍາວ່າ ຊີ້ນສັນ ເສັ້ນເອັນໃຫຍ່ ເສັ້ນເອັນນ້ອຍ ນັ້ນ ເປັນຊື່ຂອງນັນທິຣາຄະ

ຄໍາວ່າ ມີດແລ່ເນື້ອທີ່ຄົມ ນັ້ນ ເປັນຊື່ຂອງອະຣິຍະປັນຍາທີ່ຕັດ ຊໍາແຫລະ ປາດກິເລດໃນພາຍໃນ ສັງໂຍດໃນພາຍໃນ ແລະ ເຄື່ອງມັດໃນພາຍໃນ

# ໂພດຊົງ ໗ ປະການ

[໔໐໕] ນາງທັງຫຼາຍ ຍ້ອນໂພດຊົງ ໗ ປະການນີ້ທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ້ອນອາສະວະທັງຫຼາຍໝົດໄປພິກຂຸຈຶ່ງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນຫາອາສະວະບໍ່ໄດ້ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ໂພດຊົງ ໗ ປະການ ອັນໃດແດ່?
ຄື ພິກຂຸໃນພຣະທຳວິໄນນີ້

໑. ຍ່ອມຈະເລີນ ສະຕິ ສຳໂພດຊົງ ອັນອາໄສວິເວກ (ຄວາມສະຫງັດ) ອາໄສວິຣາຄະ (ຄວາມຄາຍກຳໜັດ) ອາໄສນິໂຣທະ (ຄວາມດັບ) ນ້ອມໄປໃນໂວດສັກຄະ (ຄວາມສະລະຄືນ)
໒. ຍ່ອມຈະເລີນ ທຳມະວິຈະຍະ ສຳໂພດຊົງ ฯลฯ
໓. ຍ່ອມຈະເລີນ ວິຣິຍະ ສຳໂພດຊົງ ฯลฯ
໔. ຍ່ອມຈະເລີນ ປີຕິ ສຳໂພດຊົງ ฯลฯ
໕. ຍ່ອມຈະເລີນ ປັດສັດທິ ສຳໂພດຊົງ ฯลฯ
໖. ຍ່ອມຈະເລີນ ສະມາທິ ສຳໂພດຊົງ ฯลฯ
໗. ຍ່ອມຈະເລີນ ອຸເປກຂາ ສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣທ ນ້ອມໄປໃນໂວດສັກຄະ໑

ຍ້ອນໂພດຊົງ ໗ ປະການນີ້ແລ ທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ້ອນອາສະວະທັງຫຼາຍໝົດໄປ ພິກຂຸ ຈຶ່ງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນຫາອາສະວະບໍ່ໄດ້ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ"

[໔໐໖] ຄັ້ງນັ້ນ ທ່ານພຣະນັນທະກະກ່າວສອນພິກຂຸນີເຫຼົ່ານັ້ນ ດ້ວຍໂອວາດນີ້ແລ້ວ ຈຶ່ງສົ່ງໄປດ້ວຍຄຳວ່າ "ນາງທັງຫຼາຍ ທ່ານທັງຫຼາຍຈົ່ງໄປເທີ້ນ ສົມຄວນແກ່ເວລາແລ້ວ"

ລຳດັບນັ້ນ ພິກຂຸນີເຫຼົ່ານັ້ນ ຊົມຊື່ນຍິນດີພາສິດຂອງທ່ານພຣະນັນທະກະ ແລ້ວລຸກຂຶ້ນຈາກອາສະນະ ຂາບທ່ານພຣະນັນທະກະ ທຳປະທັກຂິນ ແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ຢືນໃນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພິກຂຸນີເຫຼົ່ານັ້ນດັ່ງນີ້ວ່າ "ພິກຂຸນີທັງຫຼາຍ ທ່ານທັງຫຼາຍຈົ່ງໄປເທີ້ນ ສົມຄວນແກ່ເວລາແລ້ວ"

ຄັ້ງນັ້ນ ພິກຂຸນີເຫຼົ່ານັ້ນ ໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ທຳປະທັກຂິນ ແລ້ວຈາກໄປ

ເມື່ອພິກຂຸນີເຫຼົ່ານັ້ນຈາກໄປແລ້ວບໍ່ດົນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ ໃນມື້ອຸໂປສົດ ໑໔ ຄ່ຳນັ້ນ ຊົນເປັນຈຳນວນຫຼາຍບໍ່ມີຄວາມເຄືອບແຄງ ຫຼື ຄວາມສົງໄສເລີຍວ່າດວງຈັນບໍ່ເຕັມດວງ ຫຼື ເຕັມດວງນໍ ແຕ່ແທ້ທີ່ຈິງ ດວງຈັນກໍຍັງບໍ່ເຕັມດວງນັ້ນເອງ ແມ່ນສັນໃດ ພິກຂຸນີເຫຼົ່ານັ້ນ ກໍຄືກັນສັນນັ້ນ ຍ່ອມເປັນຜູ້ມີໃຈຍິນດີຕໍ່ທຳມະເທດສະໜາຂອງນັນທະກະ ທັງທີ່ຍັງມີຄວາມດຳຣິບໍ່ບໍລິບູນ"

[໔໐໗] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກທ່ານພຣະນັນທະກະມາຕັດວ່າ "ນັນທະກະ ຖ້າເຊັ່ນນັ້ນ ມື້ອື່ນນີ້ ທ່ານເພິ່ງໂອວາດພິກຂຸນີເຫຼົ່ານັ້ນ ດ້ວຍໂອວາດນັ້ນເທີ້ນ" ທ່ານພຣະນັນທະກະທູນຮັບສະໜອງພຣະດຳຣັດແລ້ວ

ເມື່ອຜ່ານຄືນນັ້ນໄປ ໃນເວລາເຊົ້າ ທ່ານພຣະນັນທະກະຄອງອັນຕະຣະວາສົກ ຖືບາດແລະຈີວອນ ເຂົ້າໄປບິນທະບາດໃນກຣຸງສາວັດຖີ ທ່ຽວບິນທະບາດໃນນະຄອນສາວັດຖີແລ້ວ ກັບຈາກບິນທະບາດ ພາຍຫຼັງສັນພັດຕາຫານສຳເລັດແລ້ວ ຜູ້ດຽວເຂົ້າໄປສູ່ຣາຊະການາມ ພິກຂຸນີເຫຼົ່ານັ້ນ ເຫັນທ່ານພຣະນັນທະກະຍ່າງມາແຕ່ໄກ ຈຶ່ງຊ່ອຍກັນປູລາດອາສະນະ ແລະຕັ້ງນ້ຳລ້າງຕີນໄວ້ ທ່ານພຣະນັນທະກະນັ່ງເທິງອາສະນະທີ່ປູລາດໄວ້ ແລ້ວລ້າງຕີນ ແມ່ນພິກຂຸນີເຫຼົ່ານັ້ນຂາບທ່ານພຣະນັນທະກະແລ້ວ ນັ່ງຢູ່ບ່ອນສົມຄວນ ທ່ານພຣະນັນທະກໍໄດ້ກ່າວກັບພິກຂຸນີເຫຼົ່ານັ້ນວ່າ

"ນາງທັງຫຼາຍ ການຖາມຕອບກັນຈັກມີຂຶ້ນ ໃນການຖາມຕອບກັນນັ້ນ ນາງທັງຫຼາຍເມື່ອຮູ້ ເພິ່ງຕອບວ່າ ເຮົາທັງຫຼາຍຮູ້ ເມື່ອບໍ່ຮູ້ເພິ່ງຕອບວ່າເຮົາທັງຫຼາຍບໍ່ຮູ້ ຫຼື ນາງອົງໃດມີຄວາມເຄືອບແຄງ ຫຼື ຄວາມສົງໄສ ນາງຮູບນັ້ນເພິ່ງຖາມອາຕະມາພາບໃນເລື້ອງນັ້ນວ່າ ຂ້າແດ່ທ່ານຜູ້ຈະເລີນ ເລື້ອງນີ້ເປັນແນວໃດ? ເລື້ອງນີ້ ມີເນື້ອຄວາມແນວໃດ?"

ພິກຂຸນີເຫຼົ່ານັ້ນກ່າວວ່າ "ຂ້າແດ່ທ່ານຜູ້ຈະເລີນ ເຮົາທັງຫຼາຍມີໃຈຍິນດີຊົມຊື່ນພຣະຜູ້ເປັນເຈົ້ານັນທະກະ ດ້ວຍເຫດທີ່ພຣະຜູ້ເປັນເຈົ້ານັນທະກະປະວາຣະນາແກ່ເຮົາທັງຫຼາຍແນວນີ້"

[໔໐໘] "ນາງທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ຈັກຂຸທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່ານັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ"

"ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ໂສຕະທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ฯลฯ

"ຄານະທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ฯลฯ

"ຊິວຫາທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ฯลฯ

"ກາຍທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ฯลฯ

"ມະໂນທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ฯลฯ

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່ານັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ"

"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນກ່ອນນີ້ ເຮົາທັງຫຼາຍໄດ້ເຫັນດີແລ້ວຕາມຄວາມເປັນຈິງດ້ວຍປັນຍາອັນຊອບວ່າອາຍະຕະນະພາຍໃນ ๖ ຂອງເຮົາ ບໍ່ທ່ຽງ ແມ່ນຍ້ອນເຫດນີ້ຂ້ານ້ອຍ"

"ດີແລ້ວ ດີແລ້ວ ນາງທັງຫຼາຍ ພຣະອະຣິຍະສາວົກຜູ້ເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງ ຍ່ອມມີຄວາມເຫັນເລື້ອງນີ້ແນວນີ້

[໔໐໗] ນາງທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ື ຄື ຮູບທ່ຽງບໍທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່ານັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ"

"ນາງທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ສຽງທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ฯลฯ

"ກິ່ນທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ຯລຯ

"ຣົດທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ຯລຯ

"ໂຜດຖັບພະທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ຯລຯ

"ທຳມາຣົມທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່ານັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ"

"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນກ່ອນນີ້ ເຮົາທັງຫຼາຍໄດ້ເຫັນດີແລ້ວຕາມຄວາມເປັນຈິງດ້ວຍປັນຍາອັນຊອບວ່າອາຍະຕະນະພາຍນອກ ໖ ຂອງເຮົາ ບໍ່ທ່ຽງ ແມ່ນຍ້ອນເຫດນີ້ຂ້ານ້ອຍ"

"ດີແລ້ວ ດີແລ້ວ ນາງທັງຫຼາຍ ພຣະອະຣິຍະສາວົກຜູ້ເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງ ຍ່ອມມີຄວາມເຫັນເລື້ອງນີ້ແນວນີ້ແລ

[໔໑໐] ນາງທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ຈັກຂຸວິນຍານທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່ານັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ"

"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນກ່ອນນີ້ ເຮົາທັງຫຼາຍໄດ້ເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງວ່າໝວດວິນຍານ ໖ ຂອງເຮົາ ບໍ່ທ່ຽງ ແມ່ນຍ້ອນເຫດນີ້ຂ້ານ້ອຍ"

"ດີແລ້ວ ດີແລ້ວ ນາງທັງຫຼາຍ ພຣະອະຣິຍະສາວົກຜູ້ເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງ ຍ່ອມມີຄວາມເຫັນເລື້ອງນີ້ແນວນີ້ແລ

ນາງທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ໂສຕະວິນຍານທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ຯລຯ

"ຄານະວິນຍານທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ຯລຯ

"ຊິວຫາວິນຍານທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ຯລຯ

"ກາຍວິນຍານທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ຯລຯ

"ມະໂນວິນຍານທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່ານັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ"

"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນກ່ອນນີ້ ເຮົາທັງຫຼາຍໄດ້ເຫັນດີແລ້ວຕາມຄວາມເປັນຈິງ ດ້ວຍປັນຍາອັນຊອບວ່າໝວດວິນຍານ ໖ ຂອງເຮົາ ບໍ່ທ່ຽງ ແມ່ນຍ້ອນເຫດນີ້ຂ້ານ້ອຍ"

"ດີແລ້ວ ດີແລ້ວ ນາງທັງຫຼາຍ ພຣະອະຣິຍະສາວົກຜູ້ເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງ ຍ່ອມມີຄວາມເຫັນເລື້ອງນີ້ແນວນີ້ແລ

[໔໑໑] ນາງທັງຫຼາຍ ເມື່ອປະທີບນ້ຳມັນຖືກຈຸດໄວ້ ນ້ຳມັນກໍດີ ໄສ້ກໍດີ ນ້ຳໄຟກໍດີ ແສງສະຫວ່າງກໍດີ ລ້ວນບໍ່ທ່ຽງ ມີຄວາມຜັນແປເປັນທຳມະດາ ຜູ້ໃດເພິ່ງກ່າວແນວນີ້ວ່າເມື່ອປະທີບນ້ຳມັນນັ້ນຖືກຈຸດໄວ້ ນ້ຳມັນກໍດີ ໄສ້ກໍດີ ນ້ຳໄຟກໍດີ ລ້ວນບໍ່ທ່ຽງ ມີຄວາມຜັນແປເປັນທຳມະດາ ແຕ່ວ່າແສງສະຫວ່າງຂອງປະທີບນ້ຳມັນນັ້ນ ທ່ຽງ ໝັ້ນຍືນ ເປັນໄປຕິດຕໍ່ ມີຄວາມບໍ່ຜັນແປເປັນທຳມະດາຜູ້ທີ່ກ່າວນັ້ນຊື່ວ່າເພິ່ງກ່າວຖືກບໍ?"

"ບໍ່ຖືກ ຂ້ານ້ອຍ"

"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນເມື່ອປະທີບນ້ຳມັນນັ້ນຖືກຈຸດໄວ້ ນ້ຳມັນກໍດີ ໄສ້ກໍດີ ນ້ຳໄຟກໍດີ ລ້ວນບໍ່ທ່ຽງ ມີຄວາມຜັນແປເປັນທຳມະດາ ບໍ່ຈຳເປັນຕ້ອງເວົ້າເຖິງແສງສະຫວ່າງຂອງປະທີບນ້ຳມັນນັ້ນ ເຊິ່ງບໍ່ທ່ຽງ ມີຄວາມຜັນແປເປັນທຳມະດາເລີຍ ຂ້ານ້ອຍ"

"ຄືກັນສັນນັ້ນ ນາງທັງຫຼາຍ ບຸກຄົນໃດເພິ່ງກ່າວແບວນີ້ວ່າ ອາຍະຕະນະ ພາຍໃນ ໖ ຂອງເຮົານີ້ ບໍ່ທ່ຽງ ແຕ່ເຮົາອາໄສອາຍະຕະນະພາຍໃນ ໖ ແລ້ວ ຍ່ອມສະເຫວີຍເວທະນາໃດ ເປັນສຸກກໍຕາມ ເປັນທຸກກໍຕາມ ເປັນອະທຸກຂະມະສຸຂະກໍຕາມ ເວທະນານັ້ນ ທ່ຽງ ໝັ້ນຍືນ ເປັນໄປຕິດຕໍ່ ມີຄວາມບໍ່ຜັນແປເປັນທຳມະດາ ຜູ້ທີ່ກ່າວນັ້ນ ຊື່ວ່າເພິ່ງກ່າວຖືກບໍ?"

"ຖືກ ຂ້ານ້ອຍ"
"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນອາໄສປັດໄຈທີ່ເກີດຈາກອາຍະຕະນະພາຍໃນນັ້ນ ໆ ເວທະນາທີ່ເກີດຈາກອາຍະຕະນະພາຍໃນນັ້ນ ໆ ຈຶ່ງເກີດຂຶ້ນ ຍ້ອນປັດໄຈທີ່ເກີດຈາກອາຍະຕະນະພາຍໃນນັ້ນ ໆ ດັບເວທະນາທີ່ເກີດຈາກອາຍະຕະນະພາຍໃນນັ້ນ ໆ ຈຶ່ງດັບ"

"ດີແລ້ວ ດີແລ້ວ ນາງທັງຫຼາຍ ພຣະອະຣິຍະສາວົກຜູ້ເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງ ຍ່ອມມີຄວາມເຫັນເລື້ອງນີ້ແບວນີ້ແລ

[໔໑໘] ນາງທັງຫຼາຍ ຕົ້ນໄມ້ໃຫຍ່ປະເພດຢືນຕົ້ນມີແກ່ນ ມີຮາກ ລຳຕົ້ນ ງ່າແລະໃບ ແລະເງົາ ລ້ວນບໍ່ທ່ຽງ ມີຄວາມຜັນແປເປັນທຳມະດາ ຜູ້ໃດເພິ່ງກ່າວແບວນີ້ວ່າຮາກກໍດີ ລຳຕົ້ນກໍດີ ງ່າແລະໃບກໍດີ ເງົາກໍດີ ຂອງຕົ້ນໄມ້ໃຫຍ່ປະເພດຢືນຕົ້ນ ມີແກ່ນ ລ້ວນບໍ່ທ່ຽງ ມີຄວາມຜັນແປເປັນທຳມະດາ ແຕ່ວ່າເງົາຂອງຕົ້ນໄມ້ນັ້ນທ່ຽງ ໝັ້ນຍືນ ເປັນໄປຕິດຕໍ່ ບໍ່ມີຄວາມຜັນແປເປັນທຳມະດາຜູ້ທີ່ກ່າວນັ້ນຊື່ວ່າ ເພິ່ງກ່າວຖືກບໍ?"

"ບໍ່ຖືກ ຂ້ານ້ອຍ"
"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນຕົ້ນໄມ້ໃຫຍ່ປະເພດຢືນຕົ້ນມີແກ່ນ ມີຮາກ ລຳຕົ້ນ ງ່າແລະໃບ ລ້ວນບໍ່ທ່ຽງມີຄວາມຜັນແປເປັນທຳມະດາ ບໍ່ຈຳເປັນຕ້ອງເວົ້າເຖິງເງົາຂອງຕົ້ນໄມ້ນັ້ນເຊິ່ງບໍ່ທ່ຽງ ມີຄວາມຜັນແປເປັນທຳມະດາເລີຍ ຂ້ານ້ອຍ"

"ຄືກັນສັນນັ້ນ ບຸກຄົນໃດເພິ່ງກ່າວແບວນີ້ວ່າອາຍະຕະນະພາຍນອກ ໖ ຂອງເຮົານີ້ ບໍ່ທ່ຽງ ແຕ່ເຮົາອາໄສອາຍະຕະນະພາຍນອກ ໖ ແລ້ວ ຍ່ອມສະເຫວີຍເວທະນາໃດ ເປັນສຸກກໍຕາມ ເປັນທຸກກໍຕາມ ເປັນອະທຸກຂະມະສຸຂະກໍຕາມ ເວທະນານັ້ນທ່ຽງ ໝັ້ນຍືນ ເປັນໄປຕິດຕໍ່ ມີຄວາມບໍ່ຜັນແປເປັນທຳມະດາ ຜູ້ທີ່ກ່າວນັ້ນຊື່ວ່າເພິ່ງກ່າວຖືກບໍ?"

"ບໍ່ຖືກ ຂ້ານ້ອຍ"
"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນອາໄສປັດໄຈທີ່ເກີດຈາກອາຍະຕະນະພາຍນອກນັ້ນ ໆ ເວທະນາທີ່ເກີດຈາກອາຍະຕະນະພາຍນອກນັ້ນ ໆ ຈຶ່ງເກີດຂຶ້ນ ຍ້ອນປັດໄຈທີ່ເກີດຈາກອາຍະຕະນະພາຍນອກນັ້ນ ໆ ດັບເວທະນາທີ່ເກີດຈາກອາຍະຕະນະພາຍນອກນັ້ນ ໆ ຈຶ່ງດັບ"

"ດີແລ້ວ ດີແລ້ວ ນາງທັງຫຼາຍ ພຣະອະຣິຍະສາວົກຜູ້ເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງ ຍ່ອມມີຄວາມເຫັນເລື້ອງນີ້ແນວນີ້ແລ

[໔໑໓] ນາງທັງຫຼາຍ ປຽບຄື ຄົນຂ້າງົວຫຼືລູກມືຄົນຂ້າງົວ ຜູ້ຊ່ຽວຊານ ຂ້າງົວແມ່ແລ້ວໃຊ້ມີດຄົວຊີ້ນທີ່ຄົມຄົວງົວແມ່ ແຍກສ່ວນຊີ້ນໄວ້ຂ້າງໃນ ແຍກສ່ວນໜັງໄວ້ຂ້າງນອກ ໃນສ່ວນຊີ້ນນັ້ນ ສ່ວນໃດ ໆ ເປັນຊີ້ນສັນ ເສັ້ນເອັນໃຫຍ່ ເສັ້ນເອັນນ້ອຍໃນພາຍໃນ ກໍໃຊ້ມີດຄົວຊີ້ນທີ່ຄົມຕັດ ຄົວ ປາດສ່ວນນັ້ນ ໆ ແລ້ວເລາະສ່ວນໜັງ ໄວ້ຂ້າງນອກ ໃຊ້ໜັງນັ້ນປົກງົວແມ່ນັ້ນໄວ້ແລ້ວເພິ່ງກ່າວແນວນີ້ວ່າ ງົວແມ່ໂຕນີ້ ເຮົາປະກອບໄວ້ດ້ວຍໜັງຜືນນີ້ທີ່ນັ້ນ ຄົນຂ້າງົວຫຼືລູກມືຄົນຂ້າງົວນັ້ນ ເມື່ອກ່າວຊື່ວ່າເພິ່ງກ່າວຖືກບໍ?"

"ບໍ່ຖືກ ຂ້ານ້ອຍ"
"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນຄົນຂ້າງົວຫຼືລູກມືຄົນຂ້າງົວ ຜູ້ຊ່ຽວຊານນັ້ນ ຂ້າງົວແມ່ແລ້ວ ໃຊ້ມີດຄົວຊີ້ນທີ່ຄົມຄົວງົວແມ່ ແຍກສ່ວນຊີ້ນໄວ້ຂ້າງໃນ ແຍກສ່ວນໜັງໄວ້ຂ້າງນອກ ໃນສ່ວນຊີ້ນນັ້ນ ສ່ວນໃດ ໆ ເປັນຊີ້ນສັນ ເສັ້ນເອັນໃຫຍ່ ເສັ້ນເອັນນ້ອຍໃນພາຍໃນ ກໍໃຊ້ມີດຄົວຊີ້ນທີ່ຄົມຕັດ ຄົວ ປາດສ່ວນນັ້ນ ໆ ແລ້ວເລາະສ່ວນໜັງ ໄວ້ຂ້າງນອກ ໃຊ້ໜັງນັ້ນປົກງົວແມ່ນັ້ນໄວ້ ແລ້ວເພິ່ງກ່າວແນວນີ້ວ່າ ງົວແມ່ໂຕນີ້ ເຮົາປະກອບໄວ້ດ້ວຍໜັງຜືນນີ້ທີ່ນັ້ນ ແມ່ນກໍຈິງ ເຖິງແນວນັ້ນ ງົວແມ່ນັ້ນກໍແຍກອອກຈາກໜັງຜືນນັ້ນແລ້ວ"

"ນາງທັງຫຼາຍ ອາຕະມາພາບເຮັດອຸປະມານີ້ເພື່ອໃຫ້ເຂົ້າໃຈເນື້ອຄວາມໄດ້ຊັດເຈນຂຶ້ນ ເນື້ອຄວາມໃນອຸປະມານັ້ນດັ່ງຕໍ່ໄປນີ້

ຄຳວ່າ ສ່ວນຊີ້ນຂ້າງໃນ ນັ້ນ ເປັນຊື່ຂອງອາຍະຕະນະພາຍໃນ ໖

ຄຳວ່າ ສ່ວນໜັງຂ້າງນອກ ນັ້ນ ເປັນຊື່ຂອງອາຍະຕະນະພາຍນອກ ໖

ຄຳວ່າ ຊີ້ນສັນ ເສັ້ນເອັນໃຫຍ່ ເສັ້ນເອັນນ້ອຍ ນັ້ນ ເປັນຊື່ຂອງນັນທິຣາຄະ

ຄຳວ່າ ມີດຄົວຊີ້ນທີ່ຄົມ ນັ້ນ ເປັນຊື່ຂອງອະຣິຍະປັນຍາທີ່ຕັດ ຄົວ ປາດກິເລດໃນພາຍໃນ ສັງໂຍດໃນພາຍໃນ ແລະເຄື່ອງມັດໃນພາຍໃນ

# โพດຊົງ ๗ ປະການ

[໔໑໔] ນາງທັງຫຼາຍ ຍ້ອນໂພດຊົງ ๗ ປະການນີ້ ທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ້ອນອາສະວະທັງຫຼາຍໝົດໄປ ພິກຂຸ ຈຶ່ງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນຫາອາສະວະບໍ່ໄດ້ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ໂພດຊົງ ๗ ປະການ ອັນໃດແດ່

ຄື ພິກຂຸໃນພຣະທຳວິໄນນີ້

໑. ຍ່ອມຈະເລີນ ສະຕິ ສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ
໒. ຍ່ອມຈະເລີນ ທຳມະວິຈະຍະ ສຳໂພດຊົງ ຯລຯ
໓. ຍ່ອມຈະເລີນ ວິຣິຍະ ສຳໂພດຊົງ ຯລຯ
໔. ຍ່ອມຈະເລີນ ປີຕິ ສຳໂພດຊົງ ຯລຯ
໕. ຍ່ອມຈະເລີນ ປັດສັດທິ ສຳໂພດຊົງ ຯລຯ
໖. ຍ່ອມຈະເລີນ ສະມາທິ ສຳໂພດຊົງ ຯລຯ
໗. ຍ່ອມຈະເລີນ ອຸເປກຂາ ສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຍ້ອນໂພດຊົງ ๗ ປະການນີ້ ທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ້ອນອາສະວະທັງຫຼາຍໝົດໄປພິກຂຸຈຶ່ງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນຫາອາສະວະບໍ່ໄດ້ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ"

[໔໑໕] ຄັ້ງນັ້ນ ທ່ານພຣະນັນທະກະໂອວາດພິກຂຸນີເຫຼົ່ານັ້ນ ດ້ວຍໂອວາດນີ້ແລ້ວ ຈຶ່ງສົ່ງໄປດ້ວຍຄຳວ່າ "ນາງທັງຫຼາຍ ທ່ານທັງຫຼາຍຈົ່ງໄປເທີ້ນ ສົມຄວນແກ່ເວລາແລ້ວ"

ລຳດັບນັ້ນ ພິກຂຸນີເຫຼົ່ານັ້ນຊົມຊື່ນ ຍິນດີພາສິດຂອງທ່ານພຣະນັນທະກະ ແລ້ວລຸກຂຶ້ນຈາກອາສະນະ ຂາບທ່ານພຣະນັນທະກະ ທຳປະທັກຂິນ ແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ຢືນຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພິກຂຸນີເຫຼົ່ານັ້ນດັ່ງນີ້ວ່າ "ພິກຂຸນີທັງຫຼາຍ ທ່ານທັງຫຼາຍຈົ່ງໄປເທີ້ນ ສົມຄວນແກ່ເວລາແລ້ວ"

ຄັ້ງນັ້ນ ພິກຂຸນີເຫຼົ່ານັ້ນ ໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ທຳປະທັກຂິນແລ້ວຈາກໄປບໍ່ດົນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ

ໃນມື້ອຸໂປສົດ ໑໕ ຄໍ່ານັ້ນ ຊຶ່ງເປັນຈໍານວນຫຼາຍບໍ່ມີຄວາມເຄືອບແຄງ ຫຼື ຄວາມສົງໄສເລີຍວ່າ ດວງຈັນບໍ່ເຕັມດວງ ຫຼື ເຕັມດວງບໍ ແຕ່ແທ້ທີ່ຈິງ ດວງຈັນກໍເຕັມດວງແລ້ວ ສັນໃດ ພິກຂຸນີເຫຼົ່ານັ້ນກໍຄືກັນສັນນັ້ນ ຍ່ອມເປັນຜູ້ມີໃຈຍິນດີຕໍ່ທໍາມະເທດສະໜາຂອງພຣະນັນທະກະ ແລະມີຄວາມດໍາຣິບໍລິບູນແລ້ວ

ພິກຂຸທັງຫຼາຍ ບັນດາພິກຂຸນີ ໕໐໐ ອົງນັ້ນ ອົງທີ່ໄດ້ຄຸນນະທໍາຊັ້ນຕໍ່າທີ່ສຸດເປັນໂສດາບັນ ບໍ່ມີທາງຕົກຕໍ່າ ມີຄວາມແນ່ນອນທີ່ຈະສໍາເລັດສໍາໂພທິໃນມື້ຂ້າງໜ້າ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ນັນທະໂກວາທະສູດທີ ໔ ຈົບ**

# ໕. ຈູລະຣາຫຸໂລວາທະສູດ[១]

## ວ່າດ້ວຍການປະທານໂອວາດແກ່ພຣະຣາຫຸນ ສູດນ້ອຍ

[໔໑໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າຊົງຫຼີກຫຼີກຢູ່ໃນບ່ອນສະຫງັດ ຊົງເກີດຄວາມຣໍາເພີງຂຶ້ນແນວນີ້ວ່າ "ທໍາເປັນເຄື່ອງບົ່ມວິມຸດຕິ[២]ຂອງຣາຫຸນແກ່ກ້າແລ້ວ ທາງທີ່ດີ ເຮົາເພິ່ງແນະນໍາຣາຫຸນໃນທໍາເປັນທີ່ສິ້ນອາສະວະໃຫ້ຍິ່ງຂຶ້ນໄປ"

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນສະເດັດເຂົ້າໄປບິນທະບາດໃນເມືອງສາວັດຖີ ຊົງທ່ຽວບິນທະບາດໃນນະຄອນສາວັດຖີແລ້ວສະເດັດກັບຈາກບິນທະບາດ ພາຍຫຼັງສະເຫວີຍພຣະກະຍາຫານສໍາເລັດແລ້ວ ຮັບສັ່ງຮຽກທ່ານພຣະຣາຫຸນມາດ້ວຍຕັດວ່າ "ຣາຫຸນ ທ່ານຈົ່ງຖືຜ້ານິສີທະນະ (ຜ້າສໍາລັບປູນັ່ງຂອງສະມະນະ) ເຮົາຈັກເຂົ້າໄປສູ່ປ່າອັນທະວັນ ເພື່ອພັກຜ່ອນກາງເວັນ"

ເມື່ອທ່ານພຣະຣາຫຸນທູນຮັບສະໜອງພຣະດໍາຣັດແລ້ວ ໄດ້ຖືຜ້ານິສີທະນະຕາມສະເດັດພຣະຜູ້ມີພຣະພາກເຈົ້າໄປເບື້ອງພຣະປຣິດສະດາງ

ສະໄໝນັ້ນ ເທວະດາຫຼາຍພັນອົງ ກໍຕິດຕາມພຣະຜູ້ມີພຣະພາກເຈົ້າໄປດ້ວຍຄິດວ່າ "ມື້ນີ້ພຣະຜູ້ມີພຣະພາກເຈົ້າ ຈັກຊົງແນະນຳທ່ານພຣະຣາຫຸນໃນທຳເປັນທີ່ສິ້ນອາສະວະໃຫ້ຍິ່ງຂຶ້ນໄປ"

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປສູ່ປ່າອັນທະວັນ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວທີ່ເຫງົ້າຕົ້ນໄມ້ແຫ່ງໜຶ່ງ ຝ່າຍທ່ານພຣະຣາຫຸນຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບທ່ານພຣະຣາຫຸນດັ່ງນີ້ວ່າ

[໔໑໗] "ຣາຫຸນ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ຈັກຂຸທ່ຽງບໍ່ທ່ຽງ?"

ທ່ານພຣະຣາຫຸນຂາບທູນວ່າ "ບໍ່ທ່ຽງ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່ານັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ"

"ຣາຫຸນ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ຮູບ ທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່ານັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ"

"ຣາຫຸນ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ຈັກຂຸວິນຍານ ທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່ານັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ"

"ຣາຫຸນ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ຈັກຂຸສຳຜັດ ທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່ານັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ"

"ຣາຫຸນ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ແມ່ນເວທະນາ ສັນຍາ ສັງຂານ ວິນຍານທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ທ່ຽງບໍ່ທ່ຽງ"

"ບໍ່ທ່ຽງ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່ານັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ"

[໔໑໗] "ຣາຫຸນ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ໂສຕະທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ຯລຯ

"ຄານະທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ຯລຯ

"ຊິວຫາທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ຯລຯ

"ກາຍທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ" ຯລຯ

"ຣາຫຸນ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ມະໂນທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່ານັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ"

"ຣາຫຸນ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ທຳມາຣົມ ທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່ານັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ"

"ຣາຫຸນ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ມະໂນວິນຍານ ທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່ານັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ"

"ຣາຫຸນ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄື ມະໂນສຳຜັດ ທ່ຽງບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່ານັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ"

"ຣາຫຸນ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ແມ່ນເວທະນາ ສັນຍາ ສັງຂານ ວິນຍານທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ທ່ຽງບໍ່ທ່ຽງ"

"ບໍ່ທ່ຽງ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່ານັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?"

"ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ"

[໔໑໙] "ຣາຫຸນ ອະຣິຍະສາວົກຜູ້ໄດ້ສະດັບ ເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ

ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸວິນຍານ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸສຳຜັດ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ສັນຍາ ສັງຂານ ວິນຍານ ທີ່ເກີດຂື້ນຍ້ອນຈັກຂຸສຳຜັດເປັນປັດໄຈ

ຍ່ອມເບື່ອໜ່າຍແມ່ນໃນໂສຕະ ຍ່ອມເບື່ອໜ່າຍແມ່ນໃນສຽງ ฯลฯ
ຍ່ອມເບື່ອໜ່າຍແມ່ນໃນຄານະ ຍ່ອມເບື່ອໜ່າຍແມ່ນໃນກິ່ນ ฯลฯ
ຍ່ອມເບື່ອໜ່າຍແມ່ນໃນຊິວຫາ ຍ່ອມເບື່ອໜ່າຍແມ່ນໃນຣົດ ฯลฯ
ຍ່ອມເບື່ອໜ່າຍແມ່ນໃນກາຍ ຍ່ອມເບື່ອໜ່າຍແມ່ນໃນໂຜດຖັບພະ ฯลฯ
ຍ່ອມເບື່ອໜ່າຍແມ່ນໃນມະໂນ ຍ່ອມເບື່ອໜ່າຍແມ່ນໃນທຳມາຣົມ ຍ່ອມເບື່ອໜ່າຍແມ່ນໃນມະໂນວິນຍານ ຍ່ອມເບື່ອໜ່າຍແມ່ນໃນມະໂນສຳຜັດ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ສັນຍາ ສັງຂານ ວິນຍານ ທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈ

ເມື່ອເບື່ອໜ່າຍ ຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າລຸດພົ້ນແລ້ວຮູ້ແຈ້ງວ່າຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ”

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະຣາຫຸນມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ເມື່ອພຣະອົງຕັດເວຍຍາກະຣະໜະພາສິດນີ້ຢູ່ ຈິດຂອງທ່ານພຣະຣາຫຸນກໍລຸດພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນ ແລະ ທຳຈັກຂຸ°ອັນປາສະຈາກທຸລີ ປາສະຈາກມົນທິນໄດ້ເກີດແກ່ເທວະດາຫຼາຍພັນອົງວ່າ

“ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂື້ນເປັນທຳມະດາ ສິ່ງນັ້ນທັງປວງ ມີຄວາມດັບເປັນທຳມະດາ” ດັ່ງນີ້ແລ

**ຈູລະຣາຫຸໂລວາທະສູດທີ ๕ ຈົບ**

# ๖. ສະສັກກະສູດ

## ວ່າດ້ວຍທຳ ๖ ປະການ ๖ ໝວດ

[๔๔๐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດວ່າ

"ພິກຂຸທັງຫຼາຍ ເຮົາຈັກສະແດງທຳ ມີຄວາມງາມໃນເບື້ອງຕົ້ນ[໑] ມີຄວາມງາມໃນທ່າມກາງ ມີຄວາມງາມໃນທີ່ສຸດ ປະກາດພົມມະຈັນ[໒] ພ້ອມທັງອັດຖະ ແລະ ພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ຄື ທຳ ໖ ປະການ ໖ ໝວດ ທ່ານທັງຫຼາຍຈົ່ງຟັງທຳ ໖ ປະການ ໖ ໝວດນີ້ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ເມື່ອ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດເລື້ອງນີ້ວ່າ

"ທ່ານທັງຫຼາຍເພິ່ງຮູ້ອາຍະຕະນະພາຍໃນ ໖ ເພິ່ງຮູ້ອາຍະຕະນະພາຍນອກ ໖ ເພິ່ງຮູ້ໝວດວິນຍານ ໖ ເພິ່ງຮູ້ໝວດຜັດສະ ໖ ເພິ່ງຮູ້ໝວດເວທະນາ ໖ ເພິ່ງຮູ້ໝວດຕັນຫາ[໓] ໖ ອາຍະຕະນະ ໑໘ ປະການ

[໔໒໑] ເຮົາກ່າວຄຳນີ້ໄວ້ວ່າ ທ່ານທັງຫຼາຍເພິ່ງຮູ້ອາຍະຕະນະພາຍໃນ ໖ ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ຄື

| | |
|---|---|
| ໑. ຈັກຂວາຍະຕະນະ | ໒. ໂສຕາຍະຕະນະ |
| ໓. ຄານາຍະຕະນະ | ໔. ຊິວຫາຍະຕະນະ |
| ໕. ກາຍາຍະຕະນະ | ໖. ມະນາຍະຕະນະ |

ຄຳທີ່ເຮົາກ່າວໄວ້ວ່າ ທ່ານທັງຫຼາຍເພິ່ງຮູ້ອາຍະຕະນະພາຍໃນ ໖ ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ນີ້ ເປັນໝວດທຳ ໖ ໝວດທີ (໑)

ເຮົາກ່າວຄຳນີ້ໄວ້ວ່າ ເພິ່ງຮູ້ອາຍະຕະນະພາຍນອກ ໖ ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ຄື

| | |
|---|---|
| ໑. ຣູປາຍະຕະນະ | ໒. ສັດທາຍະຕະນະ |
| ໓. ຄັນທາຍະຕະນະ | ໔. ຣະສາຍະຕະນະ |
| ໕. ໂຜດຖັບພາຍະຕະນະ | ໖. ທຳມາຍະຕະນະ |

ຄຳທີ່ເຮົາກ່າວໄວ້ວ່າ ເພິ່ງຮູ້ອາຍະຕະນະພາຍນອກ ໖ ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ນີ້ ເປັນໝວດທຳ ໖ ໝວດທີ (໒)

ເຮົາກ່າວຄຳນີ້ໄວ້ວ່າ ເພິ່ງຮູ້ໝວດວິນຍານ ໖ ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ຄື

| | |
|---|---|
| ໑. ຍ້ອນອາໄສຈັກຂຸແລະຮູບ | ຈັກຂຸວິນຍານຈຶ່ງເກີດ |
| ໒. ຍ້ອນອາໄສໂສຕະແລະສຽງ | ໂສຕະວິນຍານຈຶ່ງເກີດ |
| ໓. ຍ້ອນອາໄສຄານະແລະກິ່ນ | ຄານະວິນຍານຈຶ່ງເກີດ |
| ໔. ຍ້ອນອາໄສຊິວຫາແລະຣົດ | ຊິວຫາວິນຍານຈຶ່ງເກີດ |
| ໕. ຍ້ອນອາໄສກາຍແລະໂຜດຖັບພະ | ກາຍວິນຍານຈຶ່ງເກີດ |
| ໖. ຍ້ອນອາໄສມະໂນແລະທຳມາຣົມ | ມະໂນວິນຍານຈຶ່ງເກີດ |

ຄຳທີ່ເຮົາກ່າວໄວ້ວ່າເພິ່ງຮູ້ໝວດວິນຍານ ໖ ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ນີ້ ເປັນໝວດທຳ ໖ ໝວດທີ (໓)

ເຮົາກ່າວຄຳນີ້ໄວ້ວ່າເພິ່ງຮູ້ໝວດຜັດສະ ໖ ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ຄື

໑. ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ເປັນຜັດສະ

໒. ຍ້ອນອາໄສໂສຕະແລະສຽງ ໂສຕະວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ເປັນຜັດສະ

໓. ຍ້ອນອາໄສຄານະແລະກິ່ນ ຄານະວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ເປັນຜັດສະ

໔. ຍ້ອນອາໄສຊິວຫາແລະຣົດ ຊິວຫາວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ເປັນຜັດສະ

໕. ຍ້ອນອາໄສກາຍແລະໂຜດຖັບພະ ກາຍວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ເປັນຜັດສະ

໖. ຍ້ອນອາໄສມະໂນແລະທຳມາຣົມ ມະໂນວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ເປັນຜັດສະ

ຄຳທີ່ເຮົາກ່າວໄວ້ວ່າເພິ່ງຮູ້ໝວດຜັດສະ ໖ ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ນີ້ເປັນໝວດທຳ ໖ ໝວດທີ ໔ (໔)

ເຮົາກ່າວຄຳນີ້ໄວ້ວ່າ ເພິ່ງຮູ້ໝວດເວທະນາ ໖ ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ຄື

໑. ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓

ເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ

໒. ຍ້ອນອາໄສໂສຕະແລະສຽງ ໂສຕະວິນຍານຈຶ່ງເກີດ ฯลฯ

໓. ຍ້ອນອາໄສຄານະແລະກິ່ນ ຄານະວິນຍານຈຶ່ງເກີດ ฯลฯ

໔. ຍ້ອນອາໄສຊິວຫາແລະຣົດ ຊິວຫາວິນຍານຈຶ່ງເກີດ ฯลฯ

໕. ຍ້ອນອາໄສກາຍແລະໂຜດຖັບພະ ກາຍວິນຍານຈຶ່ງເກີດ ฯลฯ

໖. ຍ້ອນອາໄສມະໂນແລະທຳມາຣົມ ມະໂນວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ

ຄຳທີ່ເຮົາກ່າວໄວ້ວ່າເພິ່ງຮູ້ໝວດເວທະນາ ໖ ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ນີ້ເປັນໝວດທຳ ໖ ໝວດທີ ໕ (໕)

ເຮົາກ່າວຄຳນີ້ໄວ້ວ່າເພິ່ງຮູ້ໝວດຕັນຫາ ໖ ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ຄື

໑. ຍ້ອນອາໄສຈັກຂຸແລະຮູບ ວິນຍານຈັກຂຸຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາ໑ຈຶ່ງເກີດ

໒. ຍ້ອນອາໄສໂສຕະແລະສຽງ ໂສຕະວິນຍານຈຶ່ງເກີດ ฯลฯ

໓. ຍ້ອນອາໄສຄານະແລະກິ່ນ ຄານະວິນຍານຈຶ່ງເກີດ ฯลฯ

໔. ຍ້ອນອາໄສຊິວຫາແລະຣົດ ຊິວຫາວິນຍານຈຶ່ງເກີດ ฯลฯ

໕. ຍ້ອນອາໄສກາຍແລະໂຜດຖັບພະ ກາຍວິນຍານຈຶ່ງເກີດ ฯลฯ

໖. ຍ້ອນອາໄສມະໂນແລະທຳມາຣົມ ມະໂນວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ

ຄຳທີ່ເຮົາກ່າວໄວ້ວ່າເພິ່ງຮູ້ໝວດຕັນຫາ ໖ ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ນີ້ ເປັນໝວດທຳ ໖ ໝວດທີ ໖ (໖)

[໔໒໒] ຜູ້ໃດເພິ່ງກ່າວແນວນີ້ວ່າ ຈັກຂຸເປັນອັດຕາຄຳຂອງຜູ້ນັ້ນບໍ່ຖືກຕ້ອງ ຈັກຂຸ ຍ່ອມຜາກົດທັງຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປ ກໍສິ່ງໃດຜາກົດທັງຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປ ສິ່ງນັ້ນ ຕ້ອງກ່າວໄດ້ດັ່ງນີ້ວ່າ ອັດຕາຂອງເຮົາຍ່ອມເກີດຂຶ້ນ ແລະ ເສື່ອມໄປຍ້ອນແນວນັ້ນ ຄຳຂອງຜູ້ທີ່ກ່າວວ່າຈັກຂຸເປັນອັດຕານັ້ນຈຶ່ງບໍ່ຖືກຕ້ອງ ຈັກຂຸເປັນອະນັດຕາ ດ້ວຍອາການແນວນີ້

ຜູ້ໃດເພິ່ງກ່າວວ່າ ຮູບເປັນອັດຕາຄຳຂອງຜູ້ນັ້ນບໍ່ຖືກຕ້ອງ ຮູບຍ່ອມຜາກົດທັງຄວາມເກີດຂຶ້ນແລະຄວາມເສື່ອມໄປ ກໍສິ່ງໃດຜາກົດທັງຄວາມເກີດຂຶ້ນແລະຄວາມເສື່ອມໄປ ສິ່ງນັ້ນຕ້ອງກ່າວໄດ້ດັ່ງນີ້ວ່າ ອັດຕາຂອງເຮົາຍ່ອມເກີດຂຶ້ນແລະເສື່ອມໄປຍ້ອນແນວນັ້ນ ຄຳຂອງຜູ້ທີ່ກ່າວວ່າຮູບເປັນອັດຕານັ້ນຈຶ່ງບໍ່ຖືກຕ້ອງ ຈັກຂຸເປັນອະນັດຕາ ຮູບເປັນອະນັດຕາ ດ້ວຍອາການແນວນີ້

ຜູ້ໃດເພິ່ງກ່າວວ່າຈັ ກຂຸວິນຍານເປັນອັດຕາຄຳຂອງຜູ້ນັ້ນບໍ່ຖືກຕ້ອງ ຈັກຂຸວິນຍານ ຍ່ອມຜາກົດທັງຄວາມເກີດຂຶ້ນແລະຄວາມເສື່ອມໄປ ກໍສິ່ງໃດຜາກົດທັງຄວາມເກີດຂຶ້ນແລະຄວາມເສື່ອມໄປ ສິ່ງນັ້ນຕ້ອງກ່າວໄດ້ດັ່ງນີ້ວ່າ ອັດຕາຂອງເຮົາຍ່ອມເກີດຂຶ້ນ ແລະ ເສື່ອມໄປຍ້ອນແນວນັ້ນ ຄຳຂອງຜູ້ທີ່ກ່າວວ່າ ຈັກຂຸວິນຍານເປັນອັດຕານັ້ນຈຶ່ງບໍ່ຖືກຕ້ອງ ຈັກຂຸເປັນ ອະນັດຕາ ຮູບເປັນອະນັດຕາ ຈັກຂຸວິນຍານເປັນອະນັດຕາ ດ້ວຍອາການແນວນີ້

ຜູ້ໃດເພິ່ງກ່າວວ່າ ຈັກຂຸສຳຜັດເປັນອັດຕາຄຳຂອງຜູ້ນັ້ນບໍ່ຖືກຕ້ອງ ຈັກຂຸສຳຜັດຍ່ອມຜາກົດທັງຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປ ກໍສິ່ງໃດຜາກົດທັງຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປ ສິ່ງນັ້ນຕ້ອງກ່າວໄດ້ດັ່ງນີ້ວ່າ ອັດຕາຂອງເຮົາຍ່ອມເກີດຂຶ້ນແລະເສື່ອມໄປຍ້ອນແນວນັ້ນ ຄຳຂອງຜູ້ທີ່ກ່າວວ່າຈັກຂຸສຳຜັດເປັນອັດຕານັ້ນຈຶ່ງບໍ່ຖືກຕ້ອງ ຈັກຂຸເປັນອະນັດຕາ ຮູບເປັນອະນັດຕາ ຈັກຂຸວິນຍານເປັນອະນັດຕາ ຈັກຂຸສຳຜັດເປັນອະນັດຕາ ດ້ວຍອາການແນວນີ້

ຜູ້ໃດເພິ່ງກ່າວວ່າ ເວທະນາເປັນອັດຕາຄຳຂອງຜູ້ນັ້ນບໍ່ຖືກຕ້ອງ ເວທະນາຍ່ອມຜາກົດທັງຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປ ກໍສິ່ງໃດຜາກົດທັງຄວາມເກີດຂຶ້ນແລະຄວາມເສື່ອມໄປ ສິ່ງນັ້ນຕ້ອງກ່າວໄດ້ດັ່ງນີ້ວ່າ ອັດຕາຂອງເຮົາຍ່ອມເກີດຂຶ້ນ ແລະ ເສື່ອມໄປຍ້ອນແນວນັ້ນ ຄຳຂອງຜູ້ທີ່ກ່າວວ່າເວທະນາເປັນອັດຕານັ້ນຈຶ່ງບໍ່ຖືກຕ້ອງ ຈັກຂຸເປັນອະນັດຕາ ຮູບເປັນອະນັດຕາ ຈັກຂຸວິນຍານເປັນອະນັດຕາ ຈັກຂຸສຳຜັດເປັນອະນັດຕາ ເວທະນາເປັນອະນັດຕາ ດ້ວຍອາການແນວນີ້

ຜູ້ໃດເພິ່ງກ່າວວ່າ ຕັນຫາເປັນອັດຕາຄຳຂອງຜູ້ນັ້ນບໍ່ຖືກຕ້ອງ ຕັນຫາຍ່ອມຜາກົດທັງຄວາມເກີດຂຶ້ນແລະຄວາມເສື່ອມໄປ ກໍສິ່ງໃດຜາກົດທັງຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປ ສິ່ງນັ້ນຕ້ອງກ່າວໄດ້ດັ່ງນີ້ວ່າ ອັດຕາຂອງເຮົາຍ່ອມເກີດຂຶ້ນ ແລະ ເສື່ອມໄປຍ້ອນແນວນັ້ນ ຄຳຂອງຜູ້ທີ່ກ່າວວ່າ ຕັນຫາເປັນອັດຕານັ້ນຈຶ່ງບໍ່ຖືກຕ້ອງ ຈັກຂຸເປັນອະນັດຕາ ຮູບເປັນອະນັດຕາ ຈັກຂຸວິນຍານເປັນອະນັດຕາ ຈັກຂຸສຳຜັດເປັນອະນັດຕາ ເວທະນາເປັນອະນັດຕາ ຕັນຫາເປັນອະນັດຕາ ດ້ວຍອາການແນວນີ້

[໔໔໓] ຜູ້ໃດເພິ່ງ ກ່າວວ່າໂສຕະເປັນອັດຕາ ฯລฯ

ຜູ້ໃດເພິ່ງກ່າວວ່າ ຄານະເປັນອັດຕາ ฯລฯ

ຜູ້ໃດເພິ່ງກ່າວວ່າ ຊິວຫາເປັນອັດຕາ ໗ລ໗
ຜູ້ໃດເພິ່ງກ່າວວ່າ ກາຍເປັນອັດຕາ ໗ລ໗

ຜູ້ໃດເພິ່ງກ່າວວ່າ ມະໂນເປັນອັດຕາຄຳຂອງຜູ້ນັ້ນບໍ່ຖືກຕ້ອງ ມະໂນຍ່ອມຜາກົດທັງຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປ ກໍສິ່ງໃດຜາກົດທັງຄວາມເກີດ ແລະ ຄວາມເສື່ອມໄປ ສິ່ງນັ້ນຕ້ອງກ່າວໄດ້ດັ່ງນີ້ວ່າ ອັດຕາຂອງເຮົາຍ່ອມເກີດຂຶ້ນ ແລະ ເສື່ອມໄປຍ້ອນແນວນັ້ນ ຄຳຂອງຜູ້ທີ່ກ່າວວ່າມະໂນເປັນອັດຕານັ້ນຈຶ່ງບໍ່ຖືກຕ້ອງ ມະໂນເປັນອະນັດຕາ ດ້ວຍອາການແນວນີ້

ຜູ້ໃດເພິ່ງກ່າວວ່າ ທຳມາຣົມເປັນອັດຕາຄຳຂອງຜູ້ນັ້ນບໍ່ຖືກຕ້ອງ ທຳມາຣົມຍ່ອມຜາກົດທັງຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປ ກໍສິ່ງໃດຜາກົດທັງຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປ ສິ່ງນັ້ນຕ້ອງກ່າວໄດ້ດັ່ງນີ້ວ່າ ອັດຕາຂອງເຮົາຍ່ອມເກີດຂຶ້ນ ແລະ ເສື່ອມໄປຍ້ອນແນວນັ້ນ ຄຳຂອງຜູ້ທີ່ກ່າວວ່າທຳມາຣົມເປັນອັດຕານັ້ນຈຶ່ງບໍ່ຖືກຕ້ອງ ມະໂນເປັນອະນັດຕາ ທຳມາຣົມເປັນອະນັດຕາ ດ້ວຍອາການແນວນີ້

ຜູ້ໃດເພິ່ງກ່າວວ່າ ມະໂນວິນຍານເປັນອັດຕາຄຳຂອງຜູ້ນັ້ນບໍ່ຖືກຕ້ອງ ມະໂນວິນຍານຍ່ອມຜາກົດທັງຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປ ກໍສິ່ງໃດຜາກົດທັງຄວາມເກີດຂຶ້ນແລະຄວາມເສື່ອມໄປ ສິ່ງນັ້ນຕ້ອງກ່າວໄດ້ດັ່ງນີ້ວ່າອັດຕາຂອງເຮົາຍ່ອມເກີດຂຶ້ນ ແລະ ເສື່ອມໄປຍ້ອນແນວນັ້ນ ຄຳຂອງຜູ້ທີ່ກ່າວວ່າມະໂນວິນຍານເປັນອັດຕານັ້ນຈຶ່ງບໍ່ຖືກຕ້ອງ ມະໂນເປັນ ອະນັດຕາ ທຳມາຣົມເປັນອະນັດຕາ ມະໂນວິນຍານເປັນອະນັດຕາ ດ້ວຍອາການແນວນີ້

ຜູ້ໃດເພິ່ງກ່າວວ່າມະໂນສຳຜັດເປັນອັດຕາຄຳຂອງຜູ້ນັ້ນບໍ່ຖືກຕ້ອງ ມະໂນສຳຜັດຍ່ອມຜາກົດທັງຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປ ກໍສິ່ງໃດຜາກົດທັງຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປ ສິ່ງນັ້ນຕ້ອງກ່າວໄດ້ດັ່ງນີ້ວ່າ ອັດຕາຂອງເຮົາຍ່ອມເກີດຂຶ້ນ ແລະ ເສື່ອມໄປຍ້ອນແນວນັ້ນ ຄຳຂອງຜູ້ທີ່ກ່າວວ່າ ມະໂນສຳຜັດເປັນອັດຕານັ້ນຈຶ່ງບໍ່ຖືກຕ້ອງ ມະໂນເປັນອະນັດຕາ ທຳມາຣົມເປັນອະນັດຕາ ມະໂນວິນຍານເປັນອະນັດຕາ ມະໂນສຳຜັດເປັນອະນັດຕາ ດ້ວຍອາການແນວນີ້

ຜູ້ໃດເພິ່ງກ່າວວ່າ ເວທະນາເປັນອັດຕາຄຳຂອງຜູ້ນັ້ນບໍ່ຖືກຕ້ອງ ເວທະນາຍ່ອມຜາກົດທັງຄວາມເກີດຂຶ້ນແລະຄວາມເສື່ອມໄປ ກໍສິ່ງໃດຜາກົດທັງຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປ ສິ່ງນັ້ນຕ້ອງກ່າວໄດ້ດັ່ງນີ້ວ່າ ອັດຕາຂອງເຮົາຍ່ອມເກີດຂຶ້ນ ແລະ ເສື່ອມໄປຍ້ອນແນວນັ້ນ ຄຳຂອງຜູ້ທີ່ກ່າວວ່າ ເວທະນາເປັນອັດຕານັ້ນຈຶ່ງບໍ່ຖືກຕ້ອງ ມະໂນເປັນອະນັດຕາ ທຳມາຣົມເປັນອະນັດຕາ ມະໂນວິນຍານເປັນອະນັດຕາ ມະໂນສຳຜັດເປັນອະນັດຕາ ເວທະນາເປັນອະນັດຕາ ດ້ວຍອາການແນວນີ້

ຜູ້ໃດເພິ່ງກ່າວວ່າ ຕັນຫາເປັນອັດຕາຄຳຂອງຜູ້ນັ້ນບໍ່ຖືກຕ້ອງ ຕັນຫາຍ່ອມຜາກົດທັງຄວາມເກີດຂຶ້ນແລະຄວາມເສື່ອມໄປ ກໍສິ່ງໃດຜາກົດທັງຄວາມເກີດຂຶ້ນແລະຄວາມເສື່ອມໄປ ສິ່ງນັ້ນຕ້ອງກ່າວໄດ້ດັ່ງນີ້ວ່າ ອັດຕາຂອງເຮົາຍ່ອມເກີດຂຶ້ນ ແລະ ເສື່ອມໄປຍ້ອນແນວນັ້ນ ຄຳຂອງຜູ້ທີ່ກ່າວວ່າຕັນຫາເປັນອັດຕານັ້ນຈຶ່ງບໍ່ຖືກຕ້ອງ ມະໂນເປັນອະນັດຕາ ທຳມາຣົມເປັນອະນັດຕາ ມະໂນວິນຍານເປັນອະນັດຕາ ມະໂນສຳຜັດເປັນອະນັດຕາ ເວທະນາເປັນອະນັດຕາ ຕັນຫາເປັນອະນັດຕາ ດ້ວຍອາການແນວນີ້

[໔໘໔] ພິກຂຸທັງຫຼາຍ ກໍປະຕິປະທານີ້ແລ ເປັນຂໍ້ປະຕິບັດໃຫ້ເຖິງສັກກາຍະສະມຸໄທ (ຄວາມເກີດຂຶ້ນແຫ່ງສັກກາຍະ)

ຄື ບຸກຄົນພິຈາລະນາເຫັນ[໑] ຈັກຂຸວ່າ ນັ້ນ ຂອງເຮົາ[໒] ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ພິຈາລະນາເຫັນ ຮູບ ວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

| | | |
|---|---|---|
| ພິຈາລະນາເຫັນ ຈັກຂຸວິນຍານ | ວ່າ | ຯລຯ |
| ພິຈາລະນາເຫັນ ຈັກຂຸສຳຜັດ | ວ່າ | ຯລຯ |
| ພິຈາລະນາເຫັນ ເວທະນາ | ວ່າ | ຯລຯ |
| ພິຈາລະນາເຫັນ ຕັນຫາ | ວ່າ | ຯລຯ |
| ພິຈາລະນາເຫັນ ໂສຕະ | ວ່າ | ຯລຯ |
| ພິຈາລະນາເຫັນ ຄານະ | ວ່າ | ຯລຯ |
| ພິຈາລະນາເຫັນ ຊິວຫາ | ວ່າ | ຯລຯ |
| ພິຈາລະນາເຫັນ ກາຍ | ວ່າ | ຯລຯ |
| ພິຈາລະນາເຫັນ ມະໂນ | ວ່າ | ຯລຯ |
| ພິຈາລະນາເຫັນ ທຳມາຣົມ | ວ່າ | ຯລຯ |
| ພິຈາລະນາເຫັນ ມະໂນວິນຍານ | ວ່າ | ຯລຯ |
| ພິຈາລະນາເຫັນ ມະໂນສຳຜັດ | ວ່າ | ຯລຯ |
| ພິຈາລະນາເຫັນ ເວທະນາ | ວ່າ | ຯລຯ |
| ພິຈາລະນາເຫັນຕັນຫາ | ວ່າ | ຯລຯ |

ພິກຂຸທັງຫຼາຍ ສ່ວນປະຕິປະທານີ້ ເປັນຂໍ້ປະຕິບັດໃຫ້ເຖິງສັກກາຍະນິໂຣດ[໑] (ຄວາມດັບສັກກາຍະ)

ຄື ບຸກຄົນພິຈາລະນາເຫັນ[໒] ຈັກຂຸ ວ່າ ນັ້ນ ບໍ່ແມ່ນຂອງເຮົາ[໓] ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິຈາລະນາເຫັນ ຮູບ ວ່າ ນັ້ນບໍ່ແມ່ນຂອງເຮົາ ຯລຯ

พิจาละนาเห็น จักขุวิมยาน ວ່າ ນັ້ນບໍ່ແມ່ນຂອງເຮົາ ຯລຯ

ພິຈາລະນາເຫັນ ຈັກຂຸວິນຍານ ວ່າ ນັ້ນບໍ່ແມ່ນຂອງເຮົາ ຯລຯ
ພິຈາລະນາເຫັນ ຈັກຂຸສໍາຜັດ ວ່າ ນັ້ນບໍ່ແມ່ນຂອງເຮົາ ຯລຯ
ພິຈາລະນາເຫັນ ເວທະນາ ວ່າ ນັ້ນບໍ່ແມ່ນຂອງເຮົາ ຯລຯ
ພິຈາລະນາເຫັນ ຕັນຫາ ວ່າ ນັ້ນບໍ່ແມ່ນຂອງເຮົາ ຯລຯ
ພິຈາລະນາເຫັນ ໂສຕະ ວ່າ ນັ້ນບໍ່ແມ່ນຂອງເຮົາ ຯລຯ
ພິຈາລະນາເຫັນ ຄານະ ວ່າ ນັ້ນບໍ່ແມ່ນຂອງເຮົາ ຯລຯ
ພິຈາລະນາເຫັນ ຊິວຫາ ວ່າ ນັ້ນບໍ່ແມ່ນຂອງເຮົາ ຯລຯ
ພິຈາລະນາເຫັນ ກາຍ ວ່າ ນັ້ນບໍ່ແມ່ນຂອງເຮົາ ຯລຯ
ພິຈາລະນາເຫັນ ມະໂນ ວ່າ ນັ້ນບໍ່ແມ່ນຂອງເຮົາ ຯລຯ
ພິຈາລະນາເຫັນ ທໍາມາຣົມ ວ່າ ນັ້ນບໍ່ແມ່ນຂອງເຮົາ ຯລຯ
ພິຈາລະນາເຫັນ ມະໂນວິນຍານ ວ່າ ນັ້ນບໍ່ແມ່ນຂອງເຮົາ ຯລຯ
ພິຈາລະນາເຫັນ ມະໂນສໍາຜັດ ວ່າ ນັ້ນບໍ່ແມ່ນຂອງເຮົາ ຯລຯ
ພິຈາລະນາເຫັນ ເວທະນາ ວ່າ ນັ້ນບໍ່ແມ່ນຂອງເຮົາ ຯລຯ
ພິຈາລະນາເຫັນ ຕັນຫາ ວ່າ ນັ້ນບໍ່ແມ່ນຂອງເຮົາ ຯລຯ

[໔໔໕] ພິກຂຸທັງຫຼາຍ ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທໍາ ໓ ເປັນຜັດສະ ຍ້ອນຜັດສະເປັນປັດໄຈ ສຸກ ທຸກ ຫຼື ອະທຸກຂະມະສຸກ ທີ່ສັດສະເຫວີຍຈຶ່ງເກີດ ເຂົາອັນສຸກຂະເວທະນາຖືກຕ້ອງແລ້ວ ຍ່ອມເພີດເພີນ ເຊີຍຊົມ ຍຶດຕິດ ບຸກຄົນນັ້ນມີຣາຄານຸໄສ (ກິເລດອັນນອນຈົມຢູ່ໃນສັນດານຄືຣາຄະ) ນອນຈົມຢູ່ ອັນທຸກຂະເວທະນາຖືກຕ້ອງແລ້ວຍ່ອມເສົ້າໂສກ ລໍາບາກ ຮໍ່າໄຮ ຕີເອິກ ໄຫ້ຈົ່ມ ເຖິງຄວາມລຸ້ມຫຼົງ[១] ເຂົາມີປະຕິຄານຸໄສ (ກິເລດນອນຈົມຢູ່ໃນສັນດານຄືປະຕິຄະ) ນອນຈົມຢູ່ ອັນອະທຸກຂະມະສຸກຂະເວທະນາຖືກຕ້ອງແລ້ວ ຍ່ອມບໍ່ຮູ້ແຈ້ງເຖິງຄວາມເກີດຂຶ້ນ ຄວາມເສື່ອມໄປ ຄຸນ ໂທດ ແລະທໍາເປັນເຄື່ອງສະບັດອອກຈາກເວທະນານັ້ນ ຕາມຄວາມເປັນຈິງ ເຂົາມີອະວິດຊານຸໄສ (ກິເລດນອນຈົມຢູ່ໃນສັນດານຄືອະວິດຊາ) ນອນຈົມຢູ່

ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ທີ່ບຸກຄົນນັ້ນ ຍັງລະຣາຄານຸໄສຍ້ອນສຸກຂະເວທະນາບໍ່ໄດ້ ຍັງບັນເທົາປະຕິຄານຸໄສຍ້ອນທຸກຂະເວທະນາບໍ່ໄດ້ ຍັງຖອນອະວິດຊານຸໄສຍ້ອນອະທຸກຂະມະສຸກຂະເວທະນາບໍ່ໄດ້ ຍັງລະອະວິດຊາແລ້ວເຮັດວິດຊາໃຫ້ເກີດບໍ່ໄດ້ ຈັກເປັນຜູ້ທໍາທີ່ສຸດທຸກໄດ້ໃນປັດຈຸບັນ

ພິກຂຸທັງຫຼາຍ ຍ້ອນອາໄສ ໂສຕະແລະສຽງ ໂສຕະວິນຍານຈຶ່ງເກີດ ຯລຯ

ຍ້ອນອາໄສ ຄານະແລະກິ່ນ ຄານະວິນຍານຈຶ່ງເກີດ ຯລຯ

ຍ້ອນອາໄສ ຊິວຫາແລະຣົດ ຊິວຫາວິນຍານຈຶ່ງເກີດ ฯລฯ

ຍ້ອນອາໄສ ກາຍແລະໂຜດຖັບພະ ກາຍວິນຍານຈຶ່ງເກີດ ฯລฯ

ຍ້ອນອາໄສມະໂນແລະທຳມາຣົມ ມະໂນວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ເປັນຜັດສະ ຍ້ອນຜັດສະເປັນປັດໄຈ ສຸກ ທຸກ ຫຼື ອະທຸກຂົມສຸກທີ່ສັດສະເຫວີຍຈຶ່ງເກີດ ເຂົາອັນສຸກຂະເວທະນາຖືກຕ້ອງແລ້ວ ຍ່ອມເພີດເພີນ ຊົມເຊີຍ ຢຶດຕິດ ບຸກຄົນນັ້ນ ມີຣາຄານຸໄສນອນຈົມຢູ່ ອັນທຸກຂະເວທະນາຖືກຕ້ອງແລ້ວ ຍ່ອມເສົ້າໂສກ ລຳບາກ ຮ່ຳໄຮ ທຸບອົກ ໄຫ້ຈົ່ມ ເຖິງຄວາມລຸ້ມຫຼົງ ເຂົາມີປະຕິຄານຸໄສນອນຈົມຢູ່ ອັນອະທຸກຂະມະສຸກຂະເວທະນາຖືກຕ້ອງແລ້ວ ຍ່ອມບໍ່ຮູ້ແຈ້ງເຖິງຄວາມເກີດຂຶ້ນ ຄວາມເສື່ອມໄປ ຄຸນ ໂທດ ແລະ ທຳເປັນເຄື່ອງສະບັດອອກຈາກເວທະນານັ້ນ ຕາມຄວາມເປັນຈິງ ເຂົາມີອະວິດຊານຸໄສນອນຈົມຢູ່

ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ທີ່ບຸກຄົນນັ້ນ ຍັງລະຣາຄານຸໄສຍ້ອນສຸກຂະເວທະນາບໍ່ໄດ້ ຍັງບັນເທົາປະຕິຄານຸໄສຍ້ອນທຸກຂະເວທະນາບໍ່ໄດ້ ຍັງຖອນອະວິດຊານຸໄສຍ້ອນອະທຸກຂະມະສຸກຂະເວທະນາບໍ່ໄດ້ ຍັງລະອະວິດຊາແລ້ວເຮັດວິດຊາໃຫ້ເກີດບໍ່ໄດ້ ຈັກເປັນຜູ້ກະທຳທີ່ສຸດທຸກໄດ້ໃນປັດຈຸບັນ

[໔໔໖] ພິກຂຸທັງຫຼາຍ ຍ້ອນອາໄສຈັກຂຸແລະຣູບ ຈັກຂຸວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ເປັນຜັດສະ ຍ້ອນຜັດສະເປັນປັດໄຈ ສຸກ ທຸກ ຫຼື ອະທຸກຂົມສຸກ ທີ່ສັດສະເຫວີຍຈຶ່ງເກີດ ເຂົາອັນສຸກຂະເວທະນາຖືກຕ້ອງແລ້ວ ຍ່ອມບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດ ບຸກຄົນນັ້ນບໍ່ມີຣາຄານຸໄສນອນຈົມຢູ່ ອັນທຸກຂະເວທະນາຖືກຕ້ອງແລ້ວ ຍ່ອມບໍ່ເສົ້າໂສກ ບໍ່ລຳບາກ ບໍ່ຮ່ຳໄຮ ບໍ່ທຸບອົກໄຫ້ຈົ່ມ ບໍ່ເຖິງຄວາມລຸ້ມຫຼົງ ບຸກຄົນນັ້ນບໍ່ມີປະຕິຄານຸໄສນອນຈົມຢູ່ ອັນອະທຸກຂະມະສຸກຂະເວທະນາຖືກຕ້ອງແລ້ວ ຍ່ອມຮູ້ແຈ້ງເຖິງຄວາມເກີດຂຶ້ນ ຄວາມເສື່ອມໄປ ຄຸນ ໂທດ ແລະ ທຳເປັນເຄື່ອງສະບັດອອກຈາກເວທະນານັ້ນ ຕາມຄວາມເປັນຈິງ ບຸກຄົນນັ້ນບໍ່ມີອະວິດຊານຸໄສນອນຈົມຢູ່

ເປັນໄປໄດ້ທີ່ບຸກຄົນນັ້ນ ລະຣາຄານຸໄສຍ້ອນສຸກຂະເວທະນາໄດ້ ບັນເທົາປະຕິຄານຸໄສຍ້ອນທຸກຂະເວທະນາໄດ້ ຖອນອະວິດຊານຸໄສຍ້ອນອະທຸກຂະມະສຸກຂະເວທະນາໄດ້ ລະອະວິດຊາແລ້ວເຮັດວິດຊາ ໃຫ້ເກີດຂຶ້ນໄດ້ແລ້ວ ຈັກເປັນຜູ້ກະທຳທີ່ສຸດທຸກໄດ້ໃນປັດຈຸບັນ

ພິກຂຸທັງຫຼາຍ ຍ້ອນອາໄສໂສຕະແລະສຽງ ໂສຕະວິນຍານຈຶ່ງເກີດ ฯລฯ

ຍ້ອນອາໄສຄານະແລະກິ່ນ ຄານະວິນຍານຈຶ່ງເກີດ ฯລฯ

ຍ້ອນອາໄສຊິວຫາແລະຣົດ ຊິວຫາວິນຍານຈຶ່ງເກີດ ฯລฯ

ຍ້ອນອາໄສກາຍແລະໂຜດຖັບພະ ກາຍວິນຍານຈຶ່ງເກີດ ฯລฯ

ຍ້ອນອາໄສມະໂນແລະທຳມາຣົມ ມະໂນວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓

ເປັນຜັດສະ ຍ້ອນຜັດສະເປັນປັດໃຈ ສຸກ ທຸກ ຫຼື ອະທຸກຂົມສຸກທີ່ສັດສະເຫວີຍຈຶ່ງເກີດ ເຂົາອັນສຸກຂະເວທະນາຖືກຕ້ອງແລ້ວ ຍ່ອມບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຍຶດຕິດ ບຸກຄົນນັ້ນ ບໍ່ມີຣາຄານຸໄສນອນຈົມຢູ່ ອັນທຸກຂະເວທະນາຖືກຕ້ອງແລ້ວຍ່ອມບໍ່ເສົ້າໂສກ ບໍ່ລຳບາກ ບໍ່ຮ່ຳໄຮ ບໍ່ທຸບອົກໄຫ້ຈົ່ມ ບໍ່ເຖິງຄວາມລຸ້ມຫຼົງ ບຸກຄົນນັ້ນ ບໍ່ມີປະຕິຄານຸໄສນອນຈົມຢູ່ ອັນອະທຸກຂະມະສຸກຂະເວທະນາຖືກຕ້ອງແລ້ວ ຍ່ອມຮູ້ແຈ້ງເຖິງຄວາມເກີດຂຶ້ນ ຄວາມເສື່ອມໄປ ຄຸນ ໂທດ ແລະທຳເປັນເຄື່ອງສະບັດອອກຈາກເວທະນານັ້ນ ຕາມຄວາມເປັນຈິງ ບຸກຄົນນັ້ນ ບໍ່ມີອະວິດຊານຸໄສນອນຈົມຢູ່

ພິກຂຸທັງຫຼາຍ ເປັນໄປໄດ້ທີ່ບຸກຄົນນັ້ນ ລະຣາຄານຸໄສຍ້ອນສຸກຂະເວທະນາໄດ້ ບັນເທົາປະຕິຄານຸໄສຍ້ອນທຸກຂະເວທະນາໄດ້ ຖອນອະວິດຊານຸໄສຍ້ອນອະທຸກຂະມະສຸກຂະເວທະນາໄດ້ ລະອະວິດຊາແລ້ວເຮັດວິດຊາໃຫ້ເກີດຂຶ້ນໄດ້ແລ້ວ ຈັກເປັນຜູ້ກະທຳທີ່ສຸດທຸກໄດ້ໃນປັດຈຸບັນ

[໔໘໗] ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້

ຍ່ອມເບື່ອໜ່າຍ ແມ່ນໃນຈັກຂຸ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸວິນຍານ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸສຳຜັດ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ຍ່ອມເບື່ອໜ່າຍແມ່ນໃນຕັນຫາ

ຍ່ອມເບື່ອໜ່າຍແມ່ນໃນ ໂສຕະ ຍ່ອມເບື່ອໜ່າຍແມ່ນໃນ ສຽງ ຯລຯ

ຍ່ອມເບື່ອໜ່າຍແມ່ນໃນ ຄານະ ຍ່ອມເບື່ອໜ່າຍແມ່ນໃນ ກິ່ນ ຯລຯ

ຍ່ອມເບື່ອໜ່າຍແມ່ນໃນ ຊິວຫາ ຍ່ອມເບື່ອໜ່າຍແມ່ນໃນ ຣົດ ຯລຯ

ຍ່ອມເບື່ອໜ່າຍແມ່ນໃນ ກາຍ ຍ່ອມເບື່ອໜ່າຍແມ່ນໃນ ໂຜດຖັບພະ ຯລຯ

ຍ່ອມເບື່ອໜ່າຍແມ່ນໃນ ມະໂນ ຍ່ອມເບື່ອໜ່າຍແມ່ນໃນທຳມາຣົມ ຍ່ອມເບື່ອໜ່າຍແມ່ນໃນມະໂນວິນຍານ ຍ່ອມເບື່ອໜ່າຍແມ່ນໃນມະໂນສຳຜັດ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ຍ່ອມເບື່ອໜ່າຍແມ່ນໃນຕັນຫາ

ເມື່ອເບື່ອໜ່າຍ ຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ”

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ແລະ ເມື່ອພຣະຜູ້ມີພຣະພາກເຈົ້າຕັດເວຍຍາກະຣະໜະພາສິດນີ້ຢູ່ ຈິດຂອງພິກຂຸປະມານ ໖໐ ອົງ ໄດ້ລຸດພົ້ນແລ້ວຈາກອາສະວະທັງຫຼາຍ ຍ້ອນບໍ່ຍຶດໝັ້ນດັ່ງນີ້ແລ

**ສະສັກກະສູດທີ ໖ ຈົບ**

# ໗. ສະລາຍະຕະນະວິພັງຄະສູດ

## ວ່າດ້ວຍການຈຳແນກອາຍະຕະນະ ໖ ປະການ

[໔໔໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດ ວ່າ

"ພິກຂຸທັງຫຼາຍ ເຮົາຈັກສະແດງທຳອັນເນື່ອງດ້ວຍອາຍະຕະນະ ໖ ທີ່ສຳຄັນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງທຳນັ້ນ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

[໔໔໘] "ພິກຂຸທັງຫຼາຍ ບຸກຄົນເມື່ອບໍ່ຮູ້ບໍ່ເຫັນຈັກຂຸຕາມຄວາມເປັນຈິງ ເມື່ອບໍ່ຮູ້ບໍ່ເຫັນຮູບຕາມຄວາມເປັນຈິງ ເມື່ອບໍ່ຮູ້ບໍ່ເຫັນຈັກຂຸວິນຍານຕາມຄວາມເປັນຈິງ ເມື່ອບໍ່ຮູ້ບໍ່ເຫັນຈັກຂຸສຳຜັດຕາມຄວາມເປັນຈິງ ເມື່ອບໍ່ຮູ້ບໍ່ເຫັນສຸກ ທຸກ ຫຼື ອະທຸກຂົມສຸກທີ່ສັດສະເຫວີຍ ເຊິ່ງເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ຕາມຄວາມເປັນຈິງ ຍ່ອມຍິນດີຫຼາຍໃນຈັກຂຸ ຍ່ອມຍິນດີຫຼາຍໃນຮູບ ຍ່ອມຍິນດີຫຼາຍໃນຈັກຂຸວິນຍານ ຍ່ອມຍິນດີຫຼາຍໃນຈັກຂຸສຳຜັດ ຍ່ອມຍິນດີຫຼາຍໃນສຸກ ທຸກ ຫຼື ອະທຸກຂົມສຸກທີ່ສັດສະເຫວີຍ ເຊິ່ງເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ

ເມື່ອບຸກຄົນນັ້ນຍິນດີ ໝົກມຸ້ນ ລຸ້ມຫຼົງ ພິຈາລະນາເຫັນເປັນຄຸນຢູ່ ອຸປາທານຂັນ ໕ ຍ່ອມເຖິງຄວາມພອກພູນຂຶ້ນຕໍ່ໄປ ແລະຕັນຫາທີ່ນຳໄປສູ່ພົບໃໝ່ອັນສະຫະຣະຄະຕະດ້ວຍຄວາມເພີດເພີນຍິນດີ ຊວນໃຫ້ເພີດເພີນໃນອາລົມນັ້ນ ໆ ກໍຍ່ອມຈະເລີນຂຶ້ນ ຄວາມກະວົນກະວາຍທີ່ເປັນໄປທາງກາຍກໍດີ ທີ່ເປັນໄປທາງໃຈກໍດີ ຍ່ອມຈະເລີນຂຶ້ນ ຄວາມເດືອດຮ້ອນທີ່ເປັນໄປທາງກາຍກໍດີ ທີ່ເປັນໄປທາງໃຈກໍດີ ຍ່ອມຈະເລີນຂຶ້ນ ຄວາມຮ້ອນຮົນທີ່ເປັນໄປທາງກາຍກໍດີ ທີ່ເປັນໄປທາງໃຈກໍດີ ຍ່ອມຈະເລີນຂຶ້ນ ເຂົາຈຶ່ງສະເຫວີຍທຸກທາງກາຍແດ່ ສະເຫວີຍທຸກທາງໃຈແດ່

ເມື່ອບໍ່ຮູ້ບໍ່ເຫັນ ໂສຕະ ຕາມຄວາມເປັນຈິງ ຯລຯ<br>
ເມື່ອບໍ່ຮູ້ບໍ່ເຫັນ ຄານະ ຕາມຄວາມເປັນຈິງ ຯລຯ

ເມື່ອບໍ່ຮູ້ບໍ່ເຫັນ ຊິວຫາ ຕາມຄວາມເປັນຈິງ ຯລຯ

ເມື່ອບໍ່ຮູ້ບໍ່ເຫັນ ກາຍ ຕາມຄວາມເປັນຈິງ ຯລຯ

ເມື່ອບໍ່ຮູ້ບໍ່ເຫັນມະໂນຕາມຄວາມເປັນຈິງ ເມື່ອບໍ່ຮູ້ບໍ່ເຫັນທຳມາຣົມຕາມຄວາມເປັນຈິງ ເມື່ອບໍ່ຮູ້ບໍ່ເຫັນມະໂນວິນຍານຕາມຄວາມເປັນຈິງ ເມື່ອບໍ່ຮູ້ບໍ່ເຫັນມະໂນສຳຜັດຕາມຄວາມເປັນຈິງ ເມື່ອບໍ່ຮູ້ບໍ່ເຫັນສຸກ ທຸກ ຫຼື ອະທຸກຂົມສຸກທີ່ສັດສະເຫວີຍ ເຊິ່ງເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໃຈຕາມຄວາມເປັນຈິງ ຍ່ອມຍິນດີຫຼາຍໃນມະໂນ ຍ່ອມຍິນດີຫຼາຍໃນ

ທຳມາຣົມ ຍ່ອມຍິນດີຫຼາຍໃນມະໂນວິນຍານ ຍ່ອມຍິນດີຫຼາຍໃນມະໂນສຳຜັດ ຍ່ອມຍິນດີຫຼາຍໃນສຸກ ທຸກ ຫຼືອະທຸກຂົມສຸກທີ່ສັດສະເຫວີຍເຊິ່ງເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໃຈ

ພິກຂຸທັງຫຼາຍ ເມື່ອບຸກຄົນນັ້ນຍິນດີ ໝົກມຸ້ນ ລຸ້ມຫຼົງ ພິຈາລະນາເຫັນເປັນຄຸນຢູ່ ອຸປາທານຂັນ ໕ ຍ່ອມເຖິງຄວາມພອກພູນຂຶ້ນຕໍ່ໄປ ແລະຕັນຫາທີ່ນຳໄປສູ່ພົບໃໝ່ອັນສະຫະຣະຄະຕະດ້ວຍຄວາມເພີດເພີນຍິນດີ ຊອນໃຫ້ເພີດເພີນໃນອາລົມນັ້ນ ໆ ກໍຍ່ອມຈະເລີນຂຶ້ນ ຄວາມກະວົນກະວາຍທີ່ເປັນໄປທາງກາຍກໍດີ ທີ່ເປັນໄປທາງໃຈກໍດີ ຍ່ອມຈະເລີນຂຶ້ນ ຄວາມເດືອດຮ້ອນທີ່ເປັນໄປທາງກາຍກໍດີ ທີ່ເປັນໄປທາງໃຈກໍດີ ຍ່ອມຈະເລີນຂຶ້ນ ຄວາມຮ້ອນຮົນທີ່ເປັນໄປທາງກາຍກໍດີ ທີ່ເປັນໄປທາງໃຈກໍດີ ຍ່ອມຈະເລີນຂຶ້ນ ເຂົາຈຶ່ງສະເຫວີຍທຸກທາງກາຍແດ່ ສະເຫວີຍທຸກທາງໃຈແດ່

[໔໓໐] ພິກຂຸທັງຫຼາຍ ສ່ວນບຸກຄົນເມື່ອຮູ້ເມື່ອເຫັນຈັກຂຸຕາມຄວາມເປັນຈິງ ເມື່ອຮູ້ເມື່ອເຫັນຮູບຕາມຄວາມເປັນຈິງ ເມື່ອຮູ້ເມື່ອເຫັນຈັກຂຸວິນຍານຕາມຄວາມເປັນຈິງ ເມື່ອຮູ້ເມື່ອເຫັນຈັກຂຸສຳຜັດຕາມຄວາມເປັນຈິງ ເມື່ອຮູ້ເມື່ອເຫັນສຸກ ທຸກ ຫຼືອະທຸກຂົມສຸກທີ່ສັດສະເຫວີຍເຊິ່ງເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໃຈ ຕາມຄວາມເປັນຈິງ ຍ່ອມບໍ່ຍິນດີໃນຈັກຂຸ ຍ່ອມບໍ່ຍິນດີໃນຮູບ ຍ່ອມບໍ່ຍິນດີໃນຈັກຂຸວິນຍານ ຍ່ອມບໍ່ຍິນດີໃນຈັກຂຸສຳຜັດ ຍ່ອມບໍ່ຍິນດີໃນສຸກ ທຸກ ຫຼື ອະທຸກຂົມສຸກທີ່ສັດສະເຫວີຍເຊິ່ງເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໃຈ

ເມື່ອບຸກຄົນນັ້ນບໍ່ຍິນດີ ບໍ່ໝົກມຸ້ນ ບໍ່ຫຼຸ່ມຫຼົງ ພິຈາລະນາເຫັນເປັນໂທດຢູ່ ອຸປາທານຂັນ ໕ ຍ່ອມບໍ່ເຖິງຄວາມພອກພູນຂຶ້ນຕໍ່ໄປ ເຂົາຍ່ອມລະຕັນຫາທີ່ນຳໄປສູ່ພົບໃໝ່ ອັນສະຫະຣະຄະຕະດ້ວຍຄວາມເພີດເພີນ ຍິນດີ ຊອນໃຫ້ເພີດເພີນໃນອາລົມນັ້ນ ໆ ໄດ້ ເຂົາຍ່ອມລະຄວາມກະວົນກະວາຍທີ່ເປັນໄປທາງກາຍ ທີ່ເປັນໄປທາງໃຈ ລະຄວາມເດືອດຮ້ອນ ທີ່ເປັນໄປທາງກາຍ ທີ່ເປັນໄປທາງໃຈ ລະຄວາມຮ້ອນຮົນທີ່ເປັນໄປທາງກາຍ ທີ່ເປັນໄປທາງໃຈໄດ້ ຈຶ່ງສະເຫວີຍສຸກທາງກາຍແດ່ ສະເຫວີຍສຸກທາງໃຈແດ່

[໔໓໑] ທິດຖິຂອງບຸກຄົນຜູ້ມີທຳແນວນັ້ນ ຍ່ອມເປັນສຳມາທິດຖິ ຄວາມດຳຣິຂອງບຸກຄົນ

ຜູ້ມີທຳແນວນັ້ນຍ່ອມເປັນສຳມາສັງກັບປະ ຄວາມພະຍາຍາມຂອງບຸກຄົນຜູ້ມີທຳແນວນັ້ນຍ່ອມເປັນສຳມາວາຍາມະ ສະຕິຂອງບຸກຄົນຜູ້ມີທຳແນວນັ້ນຍ່ອມເປັນສຳມາສະຕິ ສະມາທິຂອງບຸກຄົນຜູ້ມີທຳແນວນັ້ນ ຍ່ອມເປັນສຳມາສະມາທິ ສ່ວນກາຍຍະກຳ ວະຈີກຳ ອາຊີວະຂອງເຂົາຈັດວ່າບໍລິສຸດດີໃນເບື້ອງຕົ້ນຢ່າງແນ່ນອນ ເມື່ອເປັນແນວນີ້ ອະຣິຍະມັກມີອົງ ໘ ນີ້ຂອງເຂົາຍ່ອມເຖິງຄວາມຈະເລີນເຕັມທີ່

ເມື່ອບຸກຄົນນັ້ນ ຈະເລີນອະຣິຍະມັກມີອົງ ໘ ນີ້ຢູ່ແນວນີ້ ສະຕິປັດຖານ ໔ ກໍດີ ສຳມັບປະທານ ໔ ກໍດີ ອິດທິບາດ ໔ ກໍດີ ອິນຊີ ໕ ກໍດີ ພະລະ ໕ ກໍດີ ໂພດຊົງ ໗ ກໍດີ ຍ່ອມເຖິງຄວາມຈະເລີນເຕັມທີ່

ທຳ ໒ ນີ້ ຄື (໑) ສະມະຖະ (໒) ວິປັດສະນາ ຂອງເຂົາຍ່ອມຄຽງຄູ່ກັນໄປ ບຸກຄົນນັ້ນກຳນົດຮູ້ທຳທີ່ຄວນກຳນົດຮູ້ດ້ວຍປັນຍາອັນຍິ່ງ ຍ່ອມລະທຳທີ່ຄວນລະດ້ວຍປັນຍາອັນຍິ່ງ ຍ່ອມຈະເລີນທຳທີ່ຄວນຈະເລີນດ້ວຍປັນຍາອັນຍິ່ງ ຍ່ອມເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງ

ທຳທີ່ຄວນກຳນົດຮູ້ດ້ວຍປັນຍາອັນຍິ່ງ ເປັນແນວໃດ?

ຄວນຈະຕອບວ່າ ອຸປາທານຂັນ ໕ ຄື

໑. ຣູປູປາທານະຂັນ (ອຸປາທານຂັນຄືຣູບ)
໒. ເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ)
໓. ສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ)
໔. ສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ)
໕. ວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ)

ທຳເຫຼົ່ານີ້ ຊື່ວ່າ ທຳທີ່ຄວນກຳນົດຮູ້ດ້ວຍປັນຍາອັນຍິ່ງ

ທຳທີ່ຄວນລະດ້ວຍປັນຍາອັນຍິ່ງ ເປັນແນວໃດ?

ຄື (໑) ອະວິດຊາ (໒) ພະວະຕັນຫາ

ທຳເຫຼົ່ານີ້ ຊື່ວ່າ ທຳທີ່ຄວນລະດ້ວຍປັນຍາອັນຍິ່ງ

ທຳທີ່ຄວນຈະເລີນດ້ວຍປັນຍາອັນຍິ່ງ ເປັນແນວໃດ?

ຄື (໑) ສະມະຖະ (໒) ວິປັດສະນາ

ທຳເຫຼົ່ານີ້ ຊື່ວ່າ ທຳທີ່ຄວນຈະເລີນດ້ວຍປັນຍາອັນຍິ່ງ

ທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງ ເປັນແນວໃດ?

ຄື (໑) ວິດຊາ (໔) ວິມຸດຕິ

ທຳເຫຼົ່ານີ້ ຊື່ວ່າ ທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງ

[໔໓໔] ພິກຂຸທັງຫຼາຍ ບຸກຄົນເມື່ອຮູ້ ເມື່ອເຫັນໂສຕະຕາມຄວາມເປັນຈິງ ຯລຯ

ເມື່ອຮູ້ ເມື່ອເຫັນຄານະຕາມຄວາມເປັນຈິງ ຯລຯ
ເມື່ອຮູ້ ເມື່ອເຫັນຊິວຫາຕາມຄວາມເປັນຈິງ ຯລຯ
ເມື່ອຮູ້ ເມື່ອເຫັນກາຍຕາມຄວາມເປັນຈິງ ຯລຯ

ບຸກຄົນ ເມື່ອຮູ້ ເມື່ອເຫັນມະໂນຕາມຄວາມເປັນຈິງ ເມື່ອຮູ້ ເມື່ອເຫັນທຳມາຣົມຕາມຄວາມເປັນຈິງ ເມື່ອຮູ້ ເມື່ອເຫັນມະໂນວິນຍານຕາມຄວາມເປັນຈິງ ເມື່ອຮູ້ ເມື່ອເຫັນມະໂນສຳຜັດຕາມຄວາມເປັນຈິງ ເມື່ອຮູ້ ເມື່ອເຫັນສຸກ ທຸກ ຫຼື ອະທຸກຂົມສຸກທີ່ສັດສະເຫວີຍເຊິ່ງເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ຕາມຄວາມເປັນຈິງ ຍ່ອມບໍ່ຍິນດີໃນມະໂນ ຍ່ອມບໍ່ຍິນດີໃນທຳມາຣົມ ຍ່ອມບໍ່ຍິນດີໃນມະໂນວິນຍານ ຍ່ອມບໍ່ຍິນດີໃນມະໂນສຳຜັດ ຍ່ອມບໍ່ຍິນດີໃນສຸກ ທຸກ ຫຼື ອະທຸກຂົມສຸກທີ່ສັດສະເຫວີຍ ເຊິ່ງເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ

ເມື່ອບຸກຄົນນັ້ນບໍ່ຍິນດີ ບໍ່ໝົກມຸ້ນ ບໍ່ລຸ້ມຫຼົງ ພິຈາລະນາເຫັນເປັນໂທດຢູ່ ອຸປາທານຂັນ ໕ ຍ່ອມບໍ່ເຖິງຄວາມພອກພູນຂຶ້ນຕໍ່ໄປ ເຂົາຍ່ອມລະຕັນຫາທີ່ນຳໄປສູ່ພົບໃໝ່ອັນສະຫະຣະຄະຕະດ້ວຍຄວາມເພີດເພີນຍິນດີ ຊວນໃຫ້ເພີດເພີນໃນອາລົມນັ້ນ ໆ ໄດ້ ຍ່ອມລະຄວາມກະວົນກະວາຍທີ່ເປັນໄປທາງກາຍ ທີ່ເປັນໄປທາງໃຈ ລະຄວາມເດືອດຮ້ອນທີ່ເປັນໄປທາງກາຍ ທີ່ເປັນໄປທາງໃຈ ລະຄວາມຮ້ອນຮົນທີ່ເປັນໄປທາງກາຍ ທີ່ເປັນໄປທາງໃຈໄດ້ ຈຶ່ງສະເຫວີຍສຸກທາງກາຍແດ່ ສະເຫວີຍສຸກທາງໃຈແດ່

[໔໓໓] ທິດຖິຂອງບຸກຄົນຜູ້ມີທຳແນວນັ້ນ ຍ່ອມເປັນສຳມາທິດຖິ ຄວາມດຳຣິຂອງບຸກຄົນຜູ້ມີທຳແນວນັ້ນຍ່ອມເປັນສຳມາສັງກັບປະ ຄວາມພະຍາຍາມຂອງບຸກຄົນຜູ້ມີທຳແນວນັ້ນ ຍ່ອມເປັນສຳມາວາຍາມະ ສະຕິຂອງບຸກຄົນຜູ້ມີທຳແນວນັ້ນ ຍ່ອມເປັນສຳມາສະຕິ ສະມາທິຂອງບຸກຄົນຜູ້ມີທຳແນວນັ້ນ ຍ່ອມເປັນສຳມາສະມາທິ ສ່ວນກາຍຍະກຳ ວະຈີກຳ ອາຊີວະຂອງເຂົາຈັດວ່າບໍລິສຸດໃນເບື້ອງຕົ້ນຢ່າງແນ່ນອນ ເມື່ອເປັນແນວນີ້ ອະຣິຍະມັກ ມີອົງ ໘ ນີ້ຂອງເຂົາຍ່ອມເຖິງຄວາມຈະເລີນເຕັມທີ່

ເມື່ອບຸກຄົນນັ້ນ ຈະເລີນອະຣິຍະມັກມີອົງ ໘ ນີ້ຢູ່ແນວນີ້ ສະຕິປັດຖານ ໔ ກໍດີ ສຳມັບ

ປະທານ ໔ ກໍດີ ອິດທິບາດ ໔ ກໍດີ ອິນຊີ ໕ ກໍດີ ພະລະ ໕ ກໍດີ ໂພດຊົງ ໗ ກໍດີ ຍ່ອມເຖິງຄວາມຈະເລີນເຕັມທີ່

ທຳ ໒ ນີ້ ຄື (໑) ສະມະຖະ (໒) ວິປັດສະນາ ຂອງເຂົາຍ່ອມຄຽງຄູ່ກັນໄປ ບຸກຄົນນັ້ນຍ່ອມກຳນົດຮູ້ ທຳທີ່ຄວນກຳນົດຮູ້ດ້ວຍປັນຍາອັນຍິ່ງ ຍ່ອມລະທຳທີ່ຄວນລະດ້ວຍປັນຍາອັນຍິ່ງ ຍ່ອມຈະເລີນທຳທີ່ຄວນຈະເລີນດ້ວຍປັນຍາອັນຍິ່ງ ຍ່ອມເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງ

ທຳທີ່ຄວນກຳນົດຮູ້ດ້ວຍປັນຍາອັນຍິ່ງ ເປັນແນວໃດ?
ຄວນຈະຕອບວ່າ ອຸປາທານຂັນ ໕ ຄື

໑. ຣູປູປາທານະຂັນ
໒. ເວທະນູປາທານະຂັນ
໓. ສັນຍູປາທານະຂັນ
໔. ສັງຂາຣູປາທານະຂັນ
໕. ວິນຍານູປາທານະຂັນ

ທຳເຫຼົ່ານີ້ ຊື່ວ່າ ທຳທີ່ຄວນກຳນົດຮູ້ດ້ວຍປັນຍາອັນຍິ່ງ

ທຳທີ່ຄວນລະດ້ວຍປັນຍາອັນຍິ່ງ ເປັນແນວໃດ?

ຄື (໑) ອະວິດຊາ (໒) ພະວະຕັນຫາ

ທຳເຫຼົ່ານີ້ ຊື່ວ່າ ທຳທີ່ຄວນລະດ້ວຍປັນຍາອັນຍິ່ງ

ທຳທີ່ຄວນຈະເລີນດ້ວຍປັນຍາອັນຍິ່ງ ເປັນແນວໃດ?

ຄື (໑) ສະມະຖະ (໒) ວິປັດສະນາ

ທຳເຫຼົ່ານີ້ ຊື່ວ່າ ທຳທີ່ຄວນຈະເລີນດ້ວຍປັນຍາອັນຍິ່ງ

ທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງ ເປັນແນວໃດ?

ຄື (໑) ວິດຊາ (໒) ວິມຸດຕິ[๑]

ທຳເຫຼົ່ານີ້ ຊື່ວ່າ ທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງ”

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ສະລາຍະຕະນະວິພັງຄະສູດທີ ໗ ຈົບ**

# ໗. ນະຄອນວິນເທີຍຍະສູດ

## ວ່າດ້ວຍພາມແລະຄະຫະບໍດີຊາວບ້ານນະຄອນວິນທະ

[໔໓໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດເຖິງໝູ່ບ້ານພາມຂອງຊາວແຄວ້ນໂກສົນຊື່ ນະຄອນວິນທະ ພາມແລະຄະຫະບໍດີຊາວບ້ານນະຄອນວິນທະ ໄດ້ຮູ້ຂ່າວ ວ່າ

"ທ່ານພຣະສະມະນະໂຄດົມ ຜູ້ເປັນສາກະຍະບຸດ ສະເດັດອອກບວດຈາກສາກະຍະຕະກູນ ໄດ້ສະເດັດຈາຣິກຢູ່ໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ໄດ້ສະເດັດເຖິງນະຄອນວິນທະໂດຍລຳດັບ ທ່ານພຣະໂຄດົມນັ້ນ ມີກິດຕິສັບອັນງາມຂ່າລືໄປແນວນີ້ວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາ ແລະ ມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ[໑] ພຣະອົງຊົງຮູ້ແຈ້ງໂລກນີ້ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະ ໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດດ້ວຍພຣະອົງເອງແລ້ວ ຊົງປະກາດໃຫ້ຜູ້ອື່ນຮູ້ຕາມ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ຊົງປະກາດພົມມະຈັນ ພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ການໄດ້ພົບພຣະອະຣະຫັນທັງຫຼາຍແນວນີ້ ເປັນຄວາມດີຢ່າງແທ້ຈິງ"[໒]

ຄັ້ງນັ້ນ ພາມແລະຄະຫະບໍດີຊາວບ້ານນະຄອນວິນທະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ລາງພວກຖວາຍອະພິວາດແລ້ວນັ່ງຢູ່ບ່ອນສົມຄວນ ລາງພວກທູນສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນສົມຄວນ ລາງພວກປະນົມມືໄປທາງພຣະຜູ້ມີພຣະພາກເຈົ້າປະທັບນັ່ງ ແລ້ວນັ່ງຢູ່ບ່ອນສົມຄວນ ລາງພວກປະກາດຊື່ແລະໂຄດ

ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ແລ້ວນັ່ງຢູ່ບ່ອນສົມຄວນ ລາງພວກນັ່ງມິດຢູ່ ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພາມ ແລະ ຄະຫະບໍດີຊາວບ້ານນະຄອນວິນທະ ວ່າ

## ສະມະນະພາມຜູ້ບໍ່ຄວນສັກກາຣະ

[໔໓໕] "ພາມແລະຄະຫະບໍດີທັງຫຼາຍ ຖ້າອັນຍະເດຍຣະຖີປະຣິພາຊົກຖາມທ່ານທັງຫຼາຍແນວນີ້ວ່າ ພາມແລະຄະຫະບໍດີທັງຫຼາຍ ສະມະນະພາມແນວໃດ? ອັນທ່ານທັງຫຼາຍບໍ່ຄວນສັກກາຣະ ບໍ່ຄວນເຄົາລົບ ບໍ່ຄວນນັບຖື ບໍ່ຄວນບູຊາ ທ່ານທັງຫຼາຍຖືກຖາມແນວນີ້ແລ້ວ ເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້ວ່າ

ສະມະນະພາມເຫຼົ່າໃດ ຍັງບໍ່ປາສະຈາກຣາຄະ (ຄວາມກຳໜັດ) ຍັງບໍ່ປາສະຈາກໂທສະ (ຄວາມຂັດເຄືອງ) ຍັງບໍ່ປາສະຈາກໂມຫະ (ຄວາມລຸ້ມຫຼົງ) ໃນຮູບທີ່ເພິ່ງຮູ້ແຈ້ງທາງຕາ ມີຈິດຍັງບໍ່ສະງົບໃນພາຍໃນ ປະພຶດບໍ່ສະໝ່ຳສະເໝີທາງກາຍ ທາງວາຈາແລະທາງໃຈ ສະມະນະພາມແນວນີ້ ບໍ່ຄວນສັກກາຣະ ບໍ່ຄວນເຄົາລົບ ບໍ່ຄວນນັບຖື ບໍ່ຄວນບູຊາ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນວ່າ ແມ່ນເຮົາທັງຫຼາຍ ກໍຍັງບໍ່ປາສະຈາກຣາຄະ ຍັງບໍ່ປາສະຈາກໂທສະ ຍັງບໍ່ປາສະຈາກໂມຫະ ໃນຮູບທີ່ເພິ່ງຮູ້ແຈ້ງທາງຕາ ມີຈິດຍັງບໍ່ສະງົບໃນພາຍໃນ ຍັງປະພຶດບໍ່ສະໝ່ຳສະເໝີທາງກາຍ ທາງວາຈາແລະທາງໃຈ ຍ້ອນເຮົາທັງຫຼາຍບໍ່ເຫັນແມ່ນຄວາມປະພຶດທີ່ສະໝ່ຳສະເໝີນັ້ນທີ່ສູງ ໆ ຂຶ້ນໄປຂອງສະມະນະພາມເຫຼົ່ານັ້ນ ຍ້ອນແນວນັ້ນ ສະມະນະພາມເຫຼົ່ານັ້ນຈຶ່ງບໍ່ຄວນສັກກາຣະ ບໍ່ຄວນເຄົາລົບ ບໍ່ຄວນນັບຖື ບໍ່ຄວນບູຊາ

ສະມະນະພາມເຫຼົ່າໃດ ຍັງບໍ່ປາສະຈາກຣາຄະ ຍັງບໍ່ປາສະຈາກໂທສະ ຍັງບໍ່ປາສະຈາກໂມຫະໃນສຽງທີ່ເພິ່ງຮູ້ແຈ້ງ ທາງຫູ ຯລຯ

ສະມະນະພາມເຫຼົ່າໃດ ຍັງບໍ່ປາສະຈາກຣາຄະ ຍັງບໍ່ປາສະຈາກໂທສະ ຍັງບໍ່ປາສະຈາກໂມຫະໃນກິ່ນທີ່ເພິ່ງຮູ້ແຈ້ງ ທາງດັງ ຯລຯ

ສະມະນະພາມເຫຼົ່າໃດ ຍັງບໍ່ປາສະຈາກຣາຄະ ຍັງບໍ່ປາສະຈາກໂທສະ ຍັງບໍ່ປາສະຈາກໂມຫະໃນຣົດທີ່ເພິ່ງຮູ້ແຈ້ງ ທາງລີ້ນ ຯລຯ

ສະມະນະພາມເຫຼົ່າໃດ ຍັງບໍ່ປາສະຈາກຣາຄະ ຍັງບໍ່ປາສະຈາກໂທສະ ຍັງບໍ່ປາສະຈາກໂມຫະໃນໂຜດຖັບພະທີ່ເພິ່ງຮູ້ແຈ້ງ ທາງກາຍ ຯລຯ

ສະມະນະພາມເຫຼົ່າໃດ ຍັງບໍ່ປາສະຈາກຣາຄະ ຍັງບໍ່ປາສະຈາກໂທສະ ຍັງບໍ່ປາສະຈາກໂມຫະໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈ ມີຈິດຍັງບໍ່ສະງົບໃນພາຍໃນ ປະພຶດບໍ່ສະໝ່ຳສະເໝີ

ທາງກາຍ ທາງວາຈາ ແລະ ທາງໃຈ ສະມະນະພາມແນວນີ້ ບໍ່ຄວນສັກກາຣະ ບໍ່ຄວນເຄົາລົບ ບໍ່ຄວນນັບຖື ບໍ່ຄວນບູຊາ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນວ່າ ແມ່ນເຮົາທັງຫຼາຍ ກໍຍັງບໍ່ປາສະຈາກຣາຄະ ຍັງບໍ່ປາສະຈາກໂທສະ ຍັງບໍ່ປາສະຈາກໂມຫະໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈ ມີຈິດຍັງບໍ່ສະງົບໃນພາຍໃນ ຍັງປະພຶດບໍ່ສະໝ່ຳສະເໝີທາງກາຍ ທາງວາຈາ ແລະ ທາງໃຈ ຍ້ອນເຮົາທັງຫຼາຍບໍ່ເຫັນແມ່ນຄວາມປະພຶດທີ່ສະໝ່ຳສະເໝີນັ້ນທີ່ສູງ ໆ ຂຶ້ນໄປຂອງສະມະນະພາມເຫຼົ່ານັ້ນ ຍ້ອນແນວນັ້ນ ສະມະນະພາມເຫຼົ່ານັ້ນຈຶ່ງບໍ່ຄວນສັກກາຣະ ບໍ່ຄວນເຄົາລົບ ບໍ່ຄວນນັບຖື ບໍ່ຄວນບູຊາ

ພາມຄະຫະບໍດີທັງຫຼາຍ ທ່ານທັງຫຼາຍຖືກຖາມແນວນີ້ແລ້ວ ເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້ເທີ້ນ

## ສະມະນະພາມຜູ້ຄວນສັກກາຣະ

[໔໓໖] ພາມ ແລະ ຄະຫະບໍດີທັງຫຼາຍ ຖ້າອັນຍະເດຍຣະຖີປະຣິພາຊົກຖາມທ່ານທັງຫຼາຍແນວນີ້ວ່າພາມ ແລະ ຄະຫະບໍດີທັງຫຼາຍ ສະມະນະພາມຢ່າງໃດ ອັນທ່ານທັງຫຼາຍຄວນສັກກາຣະ ຄວນເຄົາລົບ ຄວນນັບຖື ຄວນບູຊາທ່ານທັງຫຼາຍຖືກຖາມແນວນີ້ແລ້ວ ເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້ ວ່າ

ສະມະນະພາມເຫຼົ່າໃດ ປາສະຈາກຣາຄະ ປາສະຈາກໂທສະ ປາສະຈາກໂມຫະໃນຮູບທີ່ເພິ່ງຮູ້ແຈ້ງທາງຕາ ມີຈິດສະງົບໃນພາຍໃນ ປະພຶດສະໝ່ຳສະເໝີທາງກາຍ ທາງວາຈາ ແລະ ທາງໃຈ ສະມະນະພາມແນວນີ້ຄວນສັກກາຣະ ຄວນເຄົາລົບ ຄວນນັບຖື ຄວນບູຊາ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນວ່າ ແມ່ນເຮົາທັງຫຼາຍ ຍັງບໍ່ປາສະຈາກຣາຄະ ຍັງບໍ່ປາສະຈາກໂທສະ ຍັງບໍ່ປາສະຈາກໂມຫະໃນຮູບທີ່ເພິ່ງຮູ້ແຈ້ງທາງຕາ ມີຈິດຍັງບໍ່ສະງົບໃນພາຍໃນ ຍັງປະພຶດບໍ່ສະໝ່ຳສະເໝີທາງກາຍ ທາງວາຈາ ແລະທາງໃຈ ຍ້ອນເຮົາທັງຫຼາຍ ເຫັນແມ່ນຄວາມປະພຶດສະໝ່ຳສະເໝີນັ້ນທີ່ສູງ ໆ ຂຶ້ນໄປຂອງສະມະນະພາມເຫຼົ່ານັ້ນ ຍ້ອນແນວນັ້ນ ສະມະນະພາມຜູ້ຈະເລີນເຫຼົ່ານັ້ນຈຶ່ງຄວນສັກກາຣະ ຄວນເຄົາລົບ ຄວນນັບຖື ຄວນບູຊາ

ສະມະນະພາມເຫຼົ່າໃດ ປາສະຈາກຣາຄະ ປາສະຈາກໂທສະ ປາສະຈາກໂມຫະໃນສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ

ສະມະນະພາມເຫຼົ່າໃດ ປາສະຈາກຣາຄະ ປາສະຈາກໂທສະ ປາສະຈາກໂມຫະໃນກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ

ສະມະນະພາມເຫຼົ່າໃດ ປາສະຈາກຣາຄະ ປາສະຈາກໂທສະ ປາສະຈາກໂມຫະໃນຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ

ສະມະນະພາມເຫຼົ່າໃດ ປາສະຈາກຣາຄະ ປາສະຈາກໂທສະ ປາສະຈາກໂມຫະໃນໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ຯລຯ

ສະມະນະພາມເຫຼົ່າໃດ ປາສະຈາກຣາຄະ ປາສະຈາກໂທສະ ປາສະຈາກໂມຫະໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈ ມີຈິດສະງົບໃນພາຍໃນ ປະພຶດສະໝ່ຳສະເໝີທາງກາຍ ທາງວາຈາ ແລະທາງໃຈ ສະມະນະພາມແນວນີ້ຄວນສັກກາຣະ ຄວນເຄົາລົບ ຄວນນັບຖື ຄວນບູຊາ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນວ່າ ແມ່ນເຮົາທັງຫຼາຍຍັງບໍ່ປາສະຈາກຣາຄະ ຍັງບໍ່ປາສະຈາກໂທສະ ຍັງບໍ່ປາສະຈາກໂມຫະໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈ ມີຈິດຍັງບໍ່ສະງົບໃນພາຍໃນ ຍັງປະພຶດບໍ່ສະໝ່ຳສະເໝີທາງກາຍ ທາງວາຈາ ແລະ ທາງໃຈ ຍ້ອນເຮົາທັງຫຼາຍ ເຫັນແມ່ນຄວາມປະພຶດສະໝ່ຳສະເໝີນັ້ນທີ່ສູງ ໆ ຂຶ້ນໄປຂອງສະມະນະພາມເຫຼົ່ານັ້ນ ຍ້ອນແນວນັ້ນ ສະມະນະພາມຜູ້ຈະເລີນເຫຼົ່ານັ້ນຈຶ່ງຄວນສັກກາຣະ ຄວນເຄົາລົບ ຄວນນັບຖື ຄວນບູຊາ

ພາມແລະຄະຫະບໍດີທັງຫຼາຍ ທ່ານທັງຫຼາຍ ຖືກຖາມແນວນີ້ແລ້ວ ເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້ເທີ້ນ

## ປະຕິປະທາຂອງຜູ້ບໍ່ມີຣາຄະ

[໔໙໗] ພາມແລະຄະຫະບໍດີທັງຫຼາຍ ຖ້າອັນຍະເດຍຣະຖີປະຣິພາຊົກຖາມທ່ານທັງຫຼາຍແນວນີ້ວ່າ ກໍທ່າທາງແລະການປະຕິບັດຂອງທ່ານຜູ້ມີອາຍຸທັງຫຼາຍເປັນແນວໃດ? ຈຶ່ງເປັນເຫດໃຫ້ທ່ານທັງຫຼາຍກ່າວເຖິງທ່ານຜູ້ມີອາຍຸທັງຫຼາຍແນວນີ້ວ່າ ທ່ານຜູ້ມີອາຍຸເຫຼົ່ານັ້ນ ເປັນຜູ້ປາສະຈາກຣາຄະ ຫຼື ປະຕິບັດເພື່ອກຳຈັດຣາຄະ ເປັນຜູ້ປາສະຈາກໂທສະ ຫຼື ປະຕິບັດເພື່ອກຳຈັດໂທສະ ເປັນຜູ້ປາສະຈາກໂມຫະ ຫຼື ປະຕິບັດເພື່ອກຳຈັດໂມຫະແນ່ນອນ

ທ່ານທັງຫຼາຍ ຖືກຖາມແນວນີ້ແລ້ວ ເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້ວ່າ ຈິງແນວນັ້ນ ທ່ານຜູ້ມີອາຍຸເຫຼົ່ານັ້ນ ຍ່ອມໃຊ້ສອຍເສນາສະນະອັນສະຫງັດ ຄື ປ່າດົງອັນເປັນທີ່ບໍ່ມີຮູບທີ່ເພິ່ງຮູ້ແຈ້ງທາງຕາ ເຊິ່ງຄົນທັງຫຼາຍເຫັນແລ້ວ ໆ ຈະເພິ່ງຍິນດີ

ຍ່ອມໃຊ້ສອຍເສນາສະນະອັນສະຫງັດ ຄື ປ່າດົງອັນເປັນທີ່ບໍ່ມີສຽງທີ່ເພິ່ງຮູ້ແຈ້ງທາງຫູ

ເຊິ່ງຄົນທັງຫຼາຍຟັງແລ້ວ ໆ ຈະເພິ່ງຍິນດີ

ຍ່ອມໃຊ້ສອຍເສນາສະນະອັນສະຫງັດ ຄື ປ່າດົງອັນເປັນທີ່ບໍ່ມີກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ເຊິ່ງຄົນທັງຫຼາຍດົມແລ້ວ ໆ ຈະເພິ່ງຍິນດີ

ຍ່ອມໃຊ້ສອຍເສນາສະນະອັນສະຫງັດ ຄື ປ່າດົງອັນເປັນທີ່ບໍ່ມີຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ເຊິ່ງຄົນທັງຫຼາຍຊີມແລ້ວ ໆ ຈະເພິ່ງຍິນດີ

ຍ່ອມໃຊ້ສອຍເສນາສະນະອັນສະຫງັດ ຄື ປ່າດົງອັນເປັນທີ່ບໍ່ມີໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ເຊິ່ງຄົນທັງຫຼາຍສຳຜັດແລ້ວ ໆ ຈະເພິ່ງຍິນດີ

ທ່າທາງແລະການປະຕິບັດຂອງທ່ານຜູ້ມີອາຍຸເຫຼົ່ານີ້ແລ ເປັນເຫດໃຫ້ຂ້າພະເຈົ້າທັງຫຼາຍກ່າວເຖິງທ່ານຜູ້ມີອາຍຸໄດ້ແນວນີ້ວ່າ 'ທ່ານຜູ້ມີອາຍຸເຫຼົ່ານັ້ນ ເປັນຜູ້ປາສະຈາກຣາຄະ ຫຼື ປະຕິບັດເພື່ອກຳຈັດຣາຄະ ເປັນຜູ້ປາສະຈາກໂທສະ ຫຼື ປະຕິບັດເພື່ອກຳຈັດໂທສະ ເປັນຜູ້ປາສະຈາກໂມຫະ ຫຼື ປະຕິບັດເພື່ອກຳຈັດໂມຫະແນ່ນອນ

ພາມແລະຄະຫະບໍດີທັງຫຼາຍ ທ່ານທັງຫຼາຍ ຖືກຖາມແນວນີ້ແລ້ວ ເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້ເທີ້ນ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພາມແລະຄະຫະບໍດີຊາວບ້ານນະຄອນວິນທະ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະໂຄດົມຊັດເຈນນ່ອນຫຼາຍ ພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງພຣະໂຄດົມຊັດເຈນນ່ອນຫຼາຍ ພຣະໂຄດົມຜູ້ຈະເລີນຊົງປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນທີ່ມືດ ໂດຍຕັ້ງໃຈວ່າຄົນມີຕາດີຈັກເຫັນຮູບໄດ້ ຂ້າພຣະອົງເຫຼົ່ານີ້ຂໍເຖິງພຣະໂຄດົມຜູ້ຈະເລີນ ພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂໍພຣະໂຄດົມຜູ້ຈະເລີນໂຜດຊົງຈຳ ຂ້າພຣະອົງທັງຫຼາຍວ່າເປັນອຸປາສົກ ຜູ້ເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

**ນະຄອນວິນເທີຍຍະສູດທີ ໗ ຈົບ**

# ໙. ປິນດະປາຕະປາຣິສຸດທິສູດ

## ວ່າດ້ວຍການເຮັດບິນທະບາດໃຫ້ບໍລິສຸດ

[໔໓໘] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ເມື່ອເວລາແລງ ທ່ານພຣະສາຣີບຸດອອກຈາກທີ່ຫຼີບຫຼີກ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນສົມຄວນ ພຣະຜູ້ມີພຣະພາກໄດ້ຕັດຖາມ ວ່າ

“ສາຣີບຸດ ທ່ານມີອິນຊີຜ່ອງໃສ ມີຜິວພັນບໍລິສຸດຜຸດຜ່ອງ ທ່ານຢູ່ດ້ວຍວິຫານທຳອັນໃດເປັນສ່ວນຫຼາຍໃນເວລານີ້ນໍ?”

ທ່ານພຣະສາຣີບຸດທູນຕອບວ່າ “ຂ້າພຣະອົງຢູ່ດ້ວຍ ສູນຍະຕາວິຫານທຳ ເປັນສ່ວນຫຼາຍໃນບັດນີ້ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ດີແລ້ວ ດີແລ້ວ ສາຣີບຸດ ໄດ້ຂ່າວວ່າທ່ານຢູ່ດ້ວຍວິຫານທຳຂອງມະຫາບຸຣຸດເປັນສ່ວນຫຼາຍໃນບັດນີ້ ຍ້ອນວິຫານທຳຂອງມະຫາບຸຣຸດນີ້ ກໍຄືສູນຍະຕາ ຍ້ອນແນວນັ້ນ ຖ້າພິກຂຸຫວັງວ່າ ເຮົາກໍຈະຢູ່ດ້ວຍສູນຍະຕາວິຫານທຳເປັນສ່ວນຫຼາຍ ພິກຂຸນັ້ນພິຈາລະນາແນວນີ້ວ່າ ເຮົາເຂົ້າເຮືອນເພື່ອບິນທະບາດໂດຍທາງໃດ ເຮົາໄດ້ທ່ຽວບິນທະບາດໃນປະເທດໃດ ແລະ ເຮົາກັບຈາກບິນທະບາດຈາກເຮືອນໂດຍທາງໃດ ໃນບ່ອນນັ້ນ ເຮົາມີສັນທະ (ຄວາມພໍໃຈ) ຣາຄະ (ຄວາມກຳໜັດ) ໂທສະ (ຄວາມຂັດເຄືອງ) ໂມຫະ (ຄວາມລຸ້ມຫຼົງ) ຫຼື ປະຕິຄະ (ຄວາມກະທົບ) ແຫ່ງໃຈໃນຮູບທີ່ເພິ່ງຮູ້ແຈ້ງທາງຕາແດ່ບໍ?

ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າ ເຮົາເຂົ້າເຮືອນເພື່ອບິນທະບາດໂດຍທາງໃດ ເຮົາໄດ້ທ່ຽວບິນທະບາດໃນປະເທດໃດ ແລະ ເຮົາກັບຈາກບິນທະບາດຈາກເຮືອນໂດຍທາງໃດ ໃນບ່ອນນັ້ນ ເຮົາມີສັນທະ ຣາຄະ ໂທສະ ໂມຫະ ຫຼື ປະຕິຄະແຫ່ງໃຈໃນຮູບທີ່ເພິ່ງຮູ້ແຈ້ງທາງຕາຢູ່ພິກຂຸນັ້ນເພິ່ງພະຍາຍາມເພື່ອລະບາບອະກຸສົນທຳເຫຼົ່ານັ້ນສາ

ແຕ່ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າ ເຮົາເຂົ້າເຮືອນເພື່ອບິນທະບາດໂດຍທາງໃດ ເຮົາໄດ້ທ່ຽວບິນທະບາດໃນປະເທດໃດ ແລະເຮົາກັບຈາກບິນທະບາດຈາກເຮືອນໂດຍທາງໃດ ໃນບ່ອນນັ້ນ ເຮົາບໍ່ມີສັນທະ ຣາຄະ ໂທສະ ໂມຫະ ຫຼື ປະຕິຄະແຫ່ງໃຈໃນຮູບທີ່ເພິ່ງຮູ້ແຈ້ງທາງຕາ

ສາຣີບຸດ ພິກຂຸນັ້ນ ເພິ່ງຕາມສຶກສາໃນກຸສົນທຳທັງຫຼາຍ ທັງກາງເວັນແລະກາງຄືນ ຢູ່ດ້ວຍປີຕິແລະປາໂມດນັ້ນເທີ້ນ

[໔໓໙] ສາຣີບຸດ ອີກປະການໜຶ່ງ ພິກຂຸເພິ່ງພິຈາລະນາເຫັນດັ່ງນີ້ວ່າ ເຮົາເຂົ້າເຮືອນເພື່ອບິນທະບາດໂດຍທາງໃດ ເຮົາໄດ້ທ່ຽວບິນທະບາດໃນປະເທດໃດ ແລະ ເຮົາກັບຈາກບິນທະບາດຈາກເຮືອນໂດຍທາງໃດ ໃນບ່ອນນັ້ນ ໆ ເຮົາມີສັນທະ ຣາຄະ ໂທສະ ໂມຫະໃນສຽງທີ່ເພິ່ງຮູ້ແຈ້ງທາງຫູແດ່ບໍ?

ເຮົາມີສັນທະ ຣາຄະ ໂທສະ ໂມຫະ ໃນກິ່ນທີ່ເພິ່ງຮູ້ແຈ້ງທາງດັງແດ່ບໍ?

ເຮົາມີສັນທະ ຣາຄະ ໂທສະ ໂມຫະ ໃນຣົດທີ່ເພິ່ງຮູ້ແຈ້ງທາງລີ້ນແດ່ບໍ?

ເຮົາມີສັນທະ ຣາຄະ ໂທສະ ໂມຫະ ໃນໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍແດ່ບໍ?

ເຮົາມີສັນທະ ຣາຄະ ໂທສະ ໂມຫະ ຫຼື ປະຕິຄະແຫ່ງໃຈ ໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈແດ່ບໍ?

ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າ ເຮົາເຂົ້າເຮືອນເພື່ອບິນທະບາດໂດຍທາງໃດ ເຮົາໄດ້ທ່ຽວບິນທະບາດໃນປະເທດໃດ ແລະ ເຮົາກັບຈາກບິນທະບາດຈາກເຮືອນໂດຍທາງໃດ ໃນບ່ອນນັ້ນ ເຮົາມີສັນທະ ຣາຄະ ໂທສະ ໂມຫະ ຫຼື ປະຕິຄະແຫ່ງໃຈ ໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈ ພິກຂຸນັ້ນ ເພິ່ງພະຍາຍາມເພື່ອລະບາບອະກຸສົນທຳນັ້ນ

ແຕ່ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າ ເຮົາເຂົ້າເຮືອນເພື່ອບິນທະບາດໂດຍທາງໃດ ເຮົາໄດ້ທ່ຽວບິນທະບາດໃນປະເທດໃດ ແລະ ເຮົາກັບຈາກບິນທະບາດຈາກເຮືອນໂດຍທາງໃດ ໃນບ່ອນນັ້ນ ເຮົາບໍ່ມີສັນທະ ຣາຄະ ໂທສະ ໂມຫະ ຫຼື ປະຕິຄະແຫ່ງໃຈໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈ

ສາຣີບຸດ ພິກຂຸນັ້ນ ເພິ່ງຕາມສຶກສາໃນກຸສົນທຳທັງຫຼາຍ ທັງກາງເວັນແລະກາງຄືນ ຢູ່ດ້ວຍປີຕິແລະປາໂມດນັ້ນເທີ້ນ

[໔໔໐] ອີກປະການໜຶ່ງ ພິກຂຸເພິ່ງພິຈາລະນາເຫັນດັ່ງນີ້ວ່າ ເຮົາລະກາມມະຄຸນ ໕ ໄດ້ແລ້ວຫຼືບໍ່?” ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າ ເຮົາຍັງລະກາມມະຄຸນ ໕ ບໍ່ໄດ້ພິກຂຸນັ້ນເພິ່ງພະຍາຍາມເພື່ອລະກາມມະຄຸນ ໕

ແຕ່ຖ້າພິກຂຸນັ້ນ ພິຈາລະນາຢູ່ຮູ້ແນວນີ້ວ່າເຮົາລະກາມມະຄຸນ ໕ ໄດ້ແລ້ວພິກຂຸນັ້ນເພິ່ງຕາມສຶກສາໃນກຸສົນທຳທັງຫຼາຍ ທັງກາງເວັນແລະກາງຄືນ ຢູ່ດ້ວຍປີຕິແລະປາໂມດນັ້ນເທີ້ນ

[໔໔໑] ອີກປະການໜຶ່ງ ພິກຂຸເພິ່ງພິຈາລະນາເຫັນດັ່ງນີ້ວ່າ ເຮົາລະນິວອນ ໕ ໄດ້ແລ້ວຫຼື

ບໍ່? ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າ ເຮົາຍັງລະນິວອນ ໕ ບໍ່ໄດ້ພິກຂຸນັ້ນ ເພິ່ງພະຍາຍາມເພື່ອລະນິວອນ ໕

ແຕ່ຖ້າພິກຂຸນັ້ນ ພິຈາລະນາຢູ່ຮູ້ແນວນີ້ວ່າເຮົາລະນິວອນ ໕ ໄດ້ແລ້ວພິກຂຸນັ້ນເພິ່ງຕາມສຶກສາໃນກຸສົນທຳທັງຫຼາຍທັງກາງເວັນແລະກາງຄືນ ຢູ່ດ້ວຍປີຕິແລະປາໂມດນັ້ນເທີ້ນ

[໔໔໘] ອີກປະການໜຶ່ງ ພິກຂຸເພິ່ງພິຈາລະນາເຫັນດັ່ງນີ້ວ່າ ເຮົາກຳນົດຮູ້ອຸປາທານຂັນ ໕ ໄດ້ແລ້ວຫຼືບໍ່? ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າ ເຮົາຍັງກຳນົດຮູ້ອຸປາທານຂັນ ໕ ບໍ່ໄດ້ ພິກຂຸນັ້ນເພິ່ງພະຍາຍາມເພື່ອກຳນົດຮູ້ອຸປາທານຂັນ ໕

ແຕ່ຖ້າພິກຂຸນັ້ນ ພິຈາລະນາຢູ່ຮູ້ແນວນີ້ວ່າ ເຮົາກຳນົດຮູ້ອຸປາທານຂັນ ໕ ໄດ້ແລ້ວພິກຂຸນັ້ນເພິ່ງຕາມສຶກສາໃນກຸສົນທຳທັງຫຼາຍ ທັງກາງເວັນແລະກາງຄືນ ຢູ່ດ້ວຍປີຕິແລະປາໂມດນັ້ນເທີ້ນ

[໔໔໙] ອີກປະການໜຶ່ງ ພິກຂຸເພິ່ງພິຈາລະນາເຫັນດັ່ງນີ້ວ່າ ເຮົາຈະເລີນສະຕິປັດຖານ ໔ ໄດ້ແລ້ວຫຼືບໍ່? ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າ ເຮົາຍັງຈະເລີນສະຕິປັດຖານ ໔ ບໍ່ໄດ້ພິກຂຸນັ້ນເພິ່ງພະຍາຍາມເພື່ອຈະເລີນສະຕິປັດຖານ ໔

ແຕ່ຖ້າພິກຂຸນັ້ນ ພິຈາລະນາຢູ່ຮູ້ແນວນີ້ວ່າ ເຮົາຈະເລີນສະຕິປັດຖານ ໔ ໄດ້ແລ້ວພິກຂຸນັ້ນເພິ່ງຕາມສຶກສາໃນກຸສົນທຳທັງຫຼາຍ ທັງກາງເວັນແລະກາງຄືນ ຢູ່ດ້ວຍປີຕິແລະປາໂມດນັ້ນເທີ້ນ

[໔໔໔] ອີກປະການໜຶ່ງ ພິກຂຸເພິ່ງພິຈາລະນາເຫັນດັ່ງນີ້ວ່າ ເຮົາຈະເລີນສຳມັບປະທານ ໔ ໄດ້ແລ້ວຫຼືບໍ່? ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າ ເຮົາຍັງຈະເລີນສຳມັບປະທານ ໔ ບໍ່ໄດ້ພິກຂຸນັ້ນເພິ່ງພະຍາຍາມເພື່ອຈະເລີນສຳມັບປະທານ ໔

ແຕ່ຖ້າພິກຂຸນັ້ນ ພິຈາລະນາຢູ່ຮູ້ແນວນີ້ວ່າເຮົາຈະເລີນສຳມັບປະທານ ໔ ໄດ້ແລ້ວພິກຂຸນັ້ນເພິ່ງຕາມສຶກສາໃນກຸສົນທຳທັງຫຼາຍ ທັງກາງເວັນແລະກາງຄືນ ຢູ່ດ້ວຍປີຕິແລະປາໂມດນັ້ນເທີ້ນ

[໔໔໕] ອີກປະການໜຶ່ງ ພິກຂຸເພິ່ງພິຈາລະນາເຫັນດັ່ງນີ້ວ່າ ເຮົາຈະເລີນອິດທິບາດ ໔ ໄດ້ແລ້ວຫຼືບໍ່? ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າ ເຮົາຍັງຈະເລີນອິດທິບາດ ໔ ບໍ່ໄດ້ພິກຂຸນັ້ນເພິ່ງພະຍາຍາມເພື່ອຈະເລີນອິດທິບາດ ໔

ແຕ່ຖ້າພິກຂຸນັ້ນ ພິຈາລະນາຢູ່ຮູ້ແນວນີ້ວ່າ ເຮົາຈະເລີນອິດທິບາດ ໔ ໄດ້ແລ້ວພິກຂຸນັ້ນເພິ່ງຕາມສຶກສາໃນກຸສົນທຳທັງຫຼາຍ ທັງກາງເວັນແລະກາງຄືນ ຢູ່ດ້ວຍປີຕິແລະປາໂມດນັ້ນເທີ້ນ

[໔໔໖] ອີກປະການໜຶ່ງ ພິກຂຸເພິ່ງພິຈາລະນາເຫັນດັ່ງນີ້ວ່າ ເຮົາຈະເລີນອິນຊີ ໕ ໄດ້ແລ້ວຫຼືບໍ່? ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າເຮົາຍັງຈະເລີນອິນຊີ ໕ ບໍ່ໄດ້ພິກຂຸນັ້ນເພິ່ງພະຍາຍາມເພື່ອຈະເລີນອິນຊີ ໕

ແຕ່ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າເຮົາຈະເລີນອິນຊີ ໕ ໄດ້ແລ້ວພິກຂຸນັ້ນເພິ່ງຕາມສຶກສາໃນກຸສົນທຳທັງຫຼາຍທັງກາງເວັນແລະກາງຄືນ ຢູ່ດ້ວຍປີຕິປາໂມດນັ້ນແລ

[໔໔໗] ອີກປະການໜຶ່ງ ພິກຂຸເພິ່ງພິຈາລະນາເຫັນດັ່ງນີ້ວ່າເຮົາຈະເລີນພະລະ ໕ ໄດ້ແລ້ວຫຼືບໍ່? ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າເຮົາຍັງຈະເລີນພະລະ ໕ ບໍ່ໄດ້ພິກຂຸນັ້ນເພິ່ງພະຍາຍາມເພື່ອຈະເລີນພະລະ ໕

ແຕ່ຖ້າພິກຂຸນັ້ນພິຈາລະນາຢູ່ຮູ້ແນວນີ້ວ່າເຮົາຈະເລີນພະລະ ໕ ໄດ້ແລ້ວພິກຂຸນັ້ນເພິ່ງຕາມສຶກສາໃນກຸສົນທຳທັງຫຼາຍທັງກາງເວັນແລະກາງຄືນ ຢູ່ດ້ວຍປີຕິແລະປາໂມດນັ້ນແລ

[໔໔໘] ອີກປະການໜຶ່ງ ພິກຂຸເພິ່ງພິຈາລະນາເຫັນດັ່ງນີ້ວ່າເຮົາຈະເລີນໂພດຊົງ ໗ ໄດ້ແລ້ວຫຼືບໍ່? ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າເຮົາຍັງຈະເລີນໂພດຊົງ ໗ ບໍ່ໄດ້ພິກຂຸນັ້ນເພິ່ງພະຍາຍາມເພື່ອຈະເລີນໂພດຊົງ ໗

ແຕ່ຖ້າພິກຂຸນັ້ນ ພິຈາລະນາຢູ່ຮູ້ແນວນີ້ວ່າເຮົາຈະເລີນໂພດຊົງ ໗ ໄດ້ແລ້ວພິກຂຸນັ້ນເພິ່ງຕາມສຶກສາໃນກຸສົນທຳທັງຫຼາຍ ທັງກາງເວັນແລະກາງຄືນ ຢູ່ດ້ວຍປີຕິແລະປາໂມດນັ້ນເທີ້ນ

[໔໔໙] ອີກປະການໜຶ່ງ ພິກຂຸເພິ່ງພິຈາລະນາເຫັນດັ່ງນີ້ວ່າ ເຮົາຈະເລີນອະຣິຍະມັກມີອົງ ໘ ໄດ້ແລ້ວຫຼືບໍ່? ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າ ເຮົາຍັງຈະເລີນອະຣິຍະມັກ ມີອົງ ໘ ບໍ່ໄດ້ພິກຂຸນັ້ນເພິ່ງພະຍາຍາມເພື່ອຈະເລີນອະຣິຍະມັກມີອົງ ໘

ແຕ່ຖ້າພິກຂຸນັ້ນ ພິຈາລະນາຢູ່ຮູ້ແນວນີ້ວ່າເຮົາຈະເລີນອະຣິຍະມັກມີອົງ ໘ ໄດ້ແລ້ວພິກຂຸນັ້ນເພິ່ງຕາມສຶກສາໃນກຸສົນທຳທັງຫຼາຍ ທັງກາງເວັນແລະກາງຄືນ ຢູ່ດ້ວຍປີຕິແລະປາໂມດນັ້ນເທີ້ນ

[໔໕໐] ອີກປະການໜຶ່ງ ພິກຂຸເພິ່ງພິຈາລະນາເຫັນດັ່ງນີ້ວ່າ ເຮົາຈະເລີນສະມະຖະແລະວິປັດສະນາໄດ້ແລ້ວຫຼືບໍ່? ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າ ເຮົາຍັງຈະເລີນສະມະຖະແລະວິປັດສະນາບໍ່ໄດ້ພິກຂຸນັ້ນ ເພິ່ງພະຍາຍາມເພື່ອຈະເລີນສະມະຖະ ແລະ ວິປັດສະນາ

ແຕ່ຖ້າພິກຂຸນັ້ນ ພິຈາລະນາຢູ່ຮູ້ແນວນີ້ວ່າ ເຮົາຈະເລີນສະມະຖະແລະວິປັດສະນາໄດ້ແລ້ວພິກຂຸນັ້ນ ເພິ່ງຕາມສຶກສາໃນກຸສົນທຳທັງຫຼາຍ ທັງກາງເວັນແລະກາງຄືນ ຢູ່ດ້ວຍປີຕິແລະປາໂມດນັ້ນເທີ້ນ

[໔໕໑] ສາຣີບຸດ ອີກປະການໜຶ່ງ ພິກຂຸເພິ່ງພິຈາລະນາເຫັນດັ່ງນີ້ວ່າ ເຮົາເຮັດວິດຊາ ແລະວິມຸດຕິໃຫ້ແຈ້ງໄດ້ແລ້ວຫຼືບໍ່? ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າ ເຮົາຍັງເຮັດວິດຊາແລະວິ ມຸດຕິໃຫ້ແຈ້ງບໍ່ໄດ້" ພິກຂຸນັ້ນ ເພິ່ງພະຍາຍາມເພື່ອເຮັດວິດຊາແລະວິມຸດຕິໃຫ້ແຈ້ງ

ແຕ່ຖ້າພິກຂຸນັ້ນ ພິຈາລະນາຢູ່ຮູ້ແນວນີ້ວ່າເຮົາເຮັດວິດຊາ ແລະ ວິມຸດຕິໃຫ້ແຈ້ງໄດ້ແລ້ວ ພິກຂຸນັ້ນເພິ່ງຕາມສຶກສາໃນກຸສົນທຳທັງຫຼາຍ ທັງກາງເວັນແລະກາງຄືນ ຢູ່ດ້ວຍປີຕິແລະປາໂມດ ນັ້ນເທີ້ນ

[໔໕໘] ສາຣີບຸດ ກໍໃນອະດີດ ສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງ ໄດ້ເຮັດບິນທະບາດ ໃຫ້ບໍລິສຸດ ສະມະນະ ຫຼື ພາມເຫຼົ່ານັ້ນທັງໝົດ ກໍໄດ້ພິຈາລະນາແລ້ວແນວນີ້ ຈຶ່ງເຮັດບິນທະ ບາດໃຫ້ບໍລິສຸດ

ໃນອະນາຄົດ ສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງ ຈັກເຮັດບິນທະບາດໃຫ້ບໍລິສຸດ ສະ ມະນະ ຫຼື ພາມເຫຼົ່ານັ້ນທັງໝົດ ກໍຈັກພິຈາລະນາແລ້ວແນວນີ້ ຈຶ່ງເຮັດບິນທະບາດໃຫ້ບໍລິສຸດ

ໃນບັດນີ້ ສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງ ເຮັດບິນທະບາດໃຫ້ບໍລິສຸດ ສະມະນະຫຼື ພາມເຫຼົ່ານັ້ນທັງໝົດ ຍ່ອມພິຈາລະນາແລ້ວແນວນີ້ ຈຶ່ງເຮັດບິນທະບາດໃຫ້ບໍລິສຸດ ຍ້ອນແນວນັ້ນ ທ່ານທັງຫຼາຍ ເພິ່ງຕັ້ງໃຈຮູ້ແນວນີ້ວ່າ ເຮົາພິຈາລະນາແລ້ວ ຈັກເຮັດບິນທະບາດໃຫ້ບໍລິສຸດ

ສາຣີບຸດ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະສາຣີບຸດມີໃຈຍິນດີ ຊົມຊື່ນພຣະ ພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ປິນດະປາຕະປາຣິສຸດທິສູດທີ ໙ ຈົບ**

# ໑໐. ອິນທະຣິຍະພາວະນາສູດ

## ວ່າດ້ວຍການຈະເລີນອິນຊີ

[໔໕໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ເວລຸວັນ[๑] ກັດຊັງຄະລານິຄົມ ຄັ້ງນັ້ນແລ

ອຸດຕະຣະມານົບ ສິດຂອງປາຣາສິຣິຍະພາມ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ທູນສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບອຸດຕະຣະມານົບ ສິດຂອງປາຣາສິຣິຍະພາມ ວ່າ

"ອຸດຕະຣະ ປາຣາສິຣິຍະພາມສະແດງການຈະເລີນອິນຊີແກ່ສາວົກແດ່ບໍ?"

ອຸດຕະຣະມານົບຂາບທູນວ່າ "ສະແດງ ຂ້ານ້ອຍ"

"ສະແດງແນວໃດ?"

"ພຣະໂຄດົມຜູ້ຈະເລີນ ໃນເລື້ອງນີ້ ທ່ານປາຣາສິຣິຍະພາມສະແດງການຈະເລີນອິນຊີແກ່ສາວົກທັງຫຼາຍແນວນີ້ວ່າ ສາວົກຂອງເຮົາຢ່າເບິ່ງຮູບທາງຕາ ຢ່າຟັງສຽງທາງຫູ ດັ່ງນີ້ເປັນຕົ້ນ ຂ້ານ້ອຍ"

"ອຸດຕະຣະ ເມື່ອເປັນເຊັ່ນນັ້ນ ສາວົກຜູ້ຈະເລີນອິນຊີແລ້ວຕາມຄຳຂອງປາຣາສິຣິຍະພາມກໍຈັກເປັນຄົນຕາບອດ ເປັນຄົນຫູໜວກແນ່ນອນ ຍ້ອນຄົນຕາບອດຍ່ອມບໍ່ເຫັນຮູບທາງຕາ ຄົນຫູໜວກຍ່ອມບໍ່ໄດ້ຍິນສຽງທາງຫູ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ອຸດຕະຣະມານົບສິດຂອງປາຣາສິຣິຍະພາມກໍນັ່ງມິດ ເກີ້ເຂີນ ຄໍຕົກ ກົ້ມໜ້າ ຊຶບເຊົາ ໝົດປະຕິພານ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງເຫັນວ່າ ອຸດຕະຣະມານົບສິດຂອງປາຣາສິຣິຍະພາມນັ່ງມິດ ເກີ້ເຂີນ ຄໍຕົກ ກົ້ມໜ້າ ຊຶບເຊົາ ໝົດປະຕິພານ ຈຶ່ງຮັບສັ່ງຮຽກທ່ານພຣະອານົນມາດ້ວຍຕັດວ່າ "ອານົນ ປາຣາສິຣິຍະພາມ ຍ່ອມສະແດງການຈະເລີນອິນຊີແກ່ສາວົກທັງຫຼາຍເປັນແນວໜຶ່ງ ແຕ່ການຈະເລີນອິນຊີອັນປະເສີດໃນອະຣິຍະວິໄນເປັນອີກແນວໜຶ່ງ"

ທ່ານພຣະອານົນຂາບທູນວ່າ "ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ບັດນີ້ເປັນການສົມຄວນແລ້ວ ຂ້າແດ່ ພຣະສຸຄົດ ບັດນີ້ ເປັນການສົມຄວນແລ້ວ ທີ່ພຣະຜູ້ມີພຣະພາກເຈົ້າເພິ່ງສະແດງການຈະເລີນອິນຊີອັນປະເສີດໃນອະຣິຍະວິໄນ ພິກຂຸທັງຫຼາຍ ໄດ້ຟັງຈາກພຣະຜູ້ມີພຣະພາກເຈົ້າແລ້ວ ຈັກຊົງຈຳໄວ້"

"ອານົນ ຖ້າຈັ່ງຊັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ເມື່ອແລ້ວ ທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດເລື້ອງນີ້ ວ່າ

[໔໕໔] "ການຈະເລີນອິນຊີອັນປະເສີດໃນອະຣິຍະວິໄນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວ ຈຶ່ງເກີດຄວາມພໍໃຈ ເກີດຄວາມບໍ່ພໍໃຈ ແລະເກີດທັງຄວາມພໍໃຈ ແລະ ຄວາມບໍ່ພໍໃຈ ພິກຂຸນັ້ນ ຮູ້ແຈ້ງແນວນີ້ວ່າ ເຮົາເກີດຄວາມພໍໃຈ ເກີດຄວາມບໍ່ພໍໃຈ ແລະ ເກີດທັງຄວາມພໍໃຈ ແລະ ຄວາມບໍ່ພໍໃຈ ນີ້ແລ້ວ ຄວາມພໍໃຈເປັນຕົ້ນນັ້ນຖືກປັດໄຈປຸງແຕ່ງ ເປັນຂອງຫຍາບ ອາໄສກັນແລະກັນເກີດຂຶ້ນ ຍັງມີສິ່ງທີ່ລະອຽດ ປະນີດ ຄືອຸເປກຂາ ຄວາມພໍໃຈ ຄວາມບໍ່ພໍໃຈ ຄວາມພໍໃຈແລະຄວາມບໍ່ພໍໃຈນັ້ນ ທີ່ເກີດຂຶ້ນແລ້ວແກ່ພິກຂຸນັ້ນຈຶ່ງດັບໄປ ອຸເປກຂາຍ່ອມດຳລົງໝັ້ນ ປຽບຄື ບຸຣຸດມີຕາດີພິບຕາ ແມ່ນສັນໃດ ຄວາມພໍໃຈ ຄວາມບໍ່ພໍໃຈ ຄວາມພໍໃຈແລະຄວາມບໍ່ພໍໃຈ ອັນເກີດຂຶ້ນແລ້ວແກ່ພິກຂຸອົງໃດອົງໜຶ່ງ ຄືກັນສັນນັ້ນ ຍ່ອມດັບໄປແນວທັນທີ ໂດຍບໍ່ຍາກແນວນີ້ ອຸເປກຂາຍ່ອມດຳລົງໝັ້ນ

ອານົນ ນີ້ເຮົາຮຽກວ່າ ການຈະເລີນອິນຊີໃນ ຮູບ ທີ່ເພິ່ງຮູ້ແຈ້ງທາງຕາອັນປະເສີດໃນອະຣິຍະວິໄນ

[໔໕໕] ອານົນ ອີກປະການໜຶ່ງ ພິກຂຸ ໄດ້ຍິນສຽງທາງຫູ ແລ້ວຈຶ່ງເກີດຄວາມພໍໃຈ ເກີດຄວາມບໍ່ພໍໃຈ ແລະ ເກີດທັງຄວາມພໍໃຈແລະຄວາມບໍ່ພໍໃຈ ພິກຂຸນັ້ນ ຮູ້ແຈ້ງແນວນີ້ວ່າເຮົາເກີດຄວາມພໍໃຈ ເກີດຄວາມບໍ່ພໍໃຈ ແລະ ເກີດທັງຄວາມພໍໃຈແລະຄວາມບໍ່ພໍໃຈນີ້ແລ້ວ ຄວາມພໍໃຈເປັນຕົ້ນນັ້ນຖືກປັດໄຈປຸງແຕ່ງ ເປັນຂອງຫຍາບ ອາໄສກັນແລະກັນເກີດຂຶ້ນ ຍັງມີສິ່ງທີ່ລະອຽດປະນີດ ຄື ອຸເປກຂາຄວາມພໍໃຈ ຄວາມບໍ່ພໍໃຈ ຄວາມພໍໃຈແລະຄວາມບໍ່ພໍໃຈນັ້ນທີ່ເກີດຂຶ້ນແລ້ວແກ່ພິກຂຸນັ້ນຈຶ່ງດັບໄປ ອຸເປກຂາຍ່ອມດຳລົງໝັ້ນ ປຽບຄື ບຸຣຸດມີກຳລັງດີດນີ້ວມືໄດ້ໂດຍບໍ່ຍາກແມ່ນສັນໃດ ຄວາມພໍໃຈ ຄວາມບໍ່ພໍໃຈ ຄວາມພໍໃຈແລະຄວາມບໍ່ພໍໃຈອັນເກີດຂຶ້ນແລ້ວແກ່ພິກຂຸອົງໃດອົງໜຶ່ງ ຄືກັນສັນນັ້ນ ຍ່ອມດັບໄປແນວທັນທີ ໂດຍບໍ່ຍາກແນວນີ້

ອານົນ ນີ້ເຮົາຮຽກວ່າ ການຈະເລີນອິນຊີໃນ ສຽງ ທີ່ເພິ່ງຮູ້ແຈ້ງທາງຫູອັນປະເສີດໃນອະຣິຍະວິໄນ

[໔໕໖] ອີກປະການໜຶ່ງ ພິກຂຸ ດົມກິ່ນທາງດັງ ແລ້ວຈຶ່ງເກີດຄວາມພໍໃຈ ເກີດຄວາມບໍ່ພໍໃຈ ແລະເກີດທັງຄວາມພໍໃຈທັງຄວາມບໍ່ພໍໃຈ ພິກຂຸນັ້ນ ຮູ້ແຈ້ງແນວນີ້ວ່າ ເຮົາເກີດຄວາມພໍໃຈເກີດຄວາມບໍ່ພໍໃຈ ແລະ ເກີດທັງຄວາມພໍໃຈແລະຄວາມບໍ່ພໍໃຈນີ້ແລ້ວ ຄວາມພໍໃຈເປັນຕົ້ນນັ້ນຖືກປັດໄຈປຸງແຕ່ງ ເປັນຂອງຫຍາບ ອາໄສກັນແລະກັນເກີດຂຶ້ນ ຍັງມີສິ່ງທີ່ລະອຽດ ປະນີດ ຄືອຸເປກຂາຄວາມພໍໃຈ ຄວາມບໍ່ພໍໃຈ ຄວາມພໍໃຈແລະຄວາມບໍ່ພໍໃຈນັ້ນ ທີ່ເກີດຂຶ້ນແລ້ວແກ່ພິກຂຸນັ້ນຈຶ່ງດັບໄປ ອຸເປກຂາຍ່ອມດຳລົງໝັ້ນ ປຽບຄື ຢາດນ້ຳກິ້ງໄປເທິງໃບບົວທີ່ອຽງຈັກໜ້ອຍ ຍ່ອມບໍ່ຕິດຢູ່ ແມ່ນສັນໃດ ຄວາມພໍໃຈ ຄວາມບໍ່ພໍໃຈ ຄວາມພໍໃຈແລະຄວາມບໍ່ພໍໃຈອັນເກີດຂຶ້ນແລ້ວແກ່ພິກຂຸອົງໃດອົງໜຶ່ງ ຄືກັນສັນນັ້ນ ຍ່ອມດັບໄປແນວທັນທີ ໂດຍບໍ່ຍາກແນວນີ້ ອຸເປກຂາຍ່ອມດຳລົງໝັ້ນ

ອານົນ ນີ້ເຮົາຮຽກວ່າ ການຈະເລີນອິນຊີໃນ ກິ່ນ ທີ່ເພິ່ງຮູ້ແຈ້ງທາງດັງອັນປະເສີດໃນອະຣິຍະວິໄນ

[໔໕໗] ອີກປະການໜຶ່ງ ພິກຂຸຊີມຣົດທາງ ລີ້ນ ແລ້ວຈຶ່ງເກີດຄວາມພໍໃຈ ເກີດຄວາມບໍ່ພໍໃຈ ແລະເກີດທັງຄວາມພໍໃຈແລະຄວາມບໍ່ພໍໃຈ ພິກຂຸນັ້ນ ຮູ້ແຈ້ງແນວນີ້ວ່າເຮົາເກີດຄວາມພໍໃຈ ເກີດຄວາມບໍ່ພໍໃຈ ແລະເກີດທັງຄວາມພໍໃຈແລະຄວາມບໍ່ພໍໃຈນີ້ແລ້ວ ຄວາມພໍໃຈເປັນຕົ້ນນັ້ນຖືກປັດໄຈປຸງແຕ່ງ ເປັນຂອງຫຍາບ ອາໄສກັນແລະກັນເກີດຂຶ້ນ ຍັງມີສິ່ງທີ່ລະອຽດ ປະນີດ ຄື ອຸເປກຂາຄວາມພໍໃຈ ຄວາມບໍ່ພໍໃຈ ຄວາມພໍໃຈແລະຄວາມບໍ່ພໍໃຈນັ້ນ ທີ່ເກີດຂຶ້ນແລ້ວແກ່ພິກຂຸນັ້ນຈຶ່ງດັບໄປ ອຸເປກຂາຍ່ອມດຳລົງໝັ້ນ ປຽບຄື ບຸຣຸດມີກຳລັງໂຮບນ້ຳລາຍໄວ້ປາຍລີ້ນ ແລ້ວຖົ່ມໄປໂດຍບໍ່ຍາກ ແມ່ນສັນໃດ ຄວາມພໍໃຈ ຄວາມບໍ່ພໍໃຈ ຄວາມພໍໃຈແລະຄວາມບໍ່ພໍໃຈອັນເກີດຂຶ້ນແລ້ວແກ່ພິກຂຸອົງໃດອົງໜຶ່ງ ຄືກັນສັນນັ້ນ ຍ່ອມດັບໄປແນວທັນທີ ໂດຍບໍ່ຍາກແນວນີ້ ອຸເປກຂາຍ່ອມດຳລົງໝັ້ນ

ອານົນ ນີ້ເຮົາຮຽກວ່າ ການຈະເລີນອິນຊີໃນຣົດທີ່ເພິ່ງຮູ້ແຈ້ງທາງ ລີ້ນ ອັນປະເສີດໃນອະຣິຍະວິໄນ

[໔໕໘] ອີກປະການໜຶ່ງ ພິກຂຸຖືກຕ້ອງ ໂຜດຖັບພະທາງກາຍ ແລ້ວຈຶ່ງເກີດຄວາມພໍໃຈ ເກີດຄວາມບໍ່ພໍໃຈ ແລະເກີດທັງຄວາມພໍໃຈແລະຄວາມບໍ່ພໍໃຈ ພິກຂຸນັ້ນຮູ້ແຈ້ງແນວນີ້ວ່າເຮົາເກີດຄວາມພໍໃຈ ເກີດຄວາມບໍ່ພໍໃຈ ແລະເກີດທັງຄວາມພໍໃຈແລະຄວາມບໍ່ພໍໃຈນີ້ແລ້ວ ຄວາມພໍໃຈເປັນຕົ້ນນັ້ນຖືກປັດໄຈປຸງແຕ່ງ ເປັນຂອງຫຍາບ ອາໄສກັນແລະກັນເກີດຂຶ້ນ ຍັງມີສິ່ງທີ່ລະອຽດ ປະນີດ ຄື ອຸເປກຂາຄວາມພໍໃຈ ຄວາມບໍ່ພໍໃຈ ຄວາມພໍໃຈແລະຄວາມບໍ່ພໍໃຈນັ້ນທີ່ເກີດຂຶ້ນແລ້ວແກ່ພິກຂຸນັ້ນຈຶ່ງດັບໄປ ອຸເປກຂາຍ່ອມດຳລົງໝັ້ນ ປຽບຄື ບຸຣຸດມີກຳລັງຢຽດແຂນອອກ ຫຼືຄູ້ແຂນເຂົ້າ ແມ່ນສັນໃດ ຄວາມພໍໃຈ ຄວາມບໍ່ພໍໃຈ ຄວາມພໍໃຈແລະຄວາມບໍ່ພໍໃຈ ອັນເກີດຂຶ້ນແກ່ພິກຂຸອົງໃດອົງໜຶ່ງ ຄືກັນສັນນັ້ນ ຍ່ອມດັບໄປແນວທັນທີ ໂດຍບໍ່ຍາກແນວນີ້ ອຸເປກຂາຍ່ອມດຳລົງໝັ້ນ

ອານົນ ນີ້ເຮົາຮຽກວ່າ ການຈະເລີນອິນຊີໃນ ໂຜດຖັບພະ ທີ່ເພິ່ງຮູ້ແຈ້ງທາງກາຍ ອັນປະເສີດໃນອະຣິຍະວິໄນ

[໔໕໙] ອານົນ ອີກປະການໜຶ່ງ ພິກຂຸຮູ້ແຈ້ງ ທຳມາຣົມທາງໃຈ ແລ້ວຈຶ່ງເກີດຄວາມພໍໃຈ ເກີດຄວາມບໍ່ພໍໃຈ ແລະເກີດທັງຄວາມພໍໃຈແລະຄວາມບໍ່ພໍໃຈ ພິກຂຸນັ້ນຮູ້ແຈ້ງແນວນີ້ວ່າເຮົາເກີດຄວາມພໍໃຈ ເກີດຄວາມບໍ່ພໍໃຈ ແລະເກີດທັງຄວາມພໍໃຈແລະຄວາມບໍ່ພໍໃຈນີ້ແລ້ວ ຄວາມພໍໃຈເປັນຕົ້ນນັ້ນຖືກປັດໄຈປຸງແຕ່ງ ເປັນຂອງຫຍາບ ອາໄສກັນແລະກັນເກີດຂຶ້ນ ຍັງມີສິ່ງທີ່ລະອຽດ ປະນີດ ຄື ອຸເປກຂາຄວາມພໍໃຈ ຄວາມບໍ່ພໍໃຈ ຄວາມພໍໃຈແລະຄວາມບໍ່ພໍໃຈນັ້ນທີ່ເກີດ

ຂຶ້ນແລ້ວແກ່ພິກຂຸນັ້ນຈຶ່ງດັບໄປ ອຸເປກຂາຍ່ອມດຳລົງໝັ້ນ ປຽບຄື ບຸຣຸດມີກຳລັງ ເອົາຢົດນ້ຳ ໘ ຢົດ ຫຼື ໓ ຢົດໃສ່ລົງໃນກະທະເຫຼັກທີ່ຮ້ອນແຮງເມີດມື້ ນ້ຳທີ່ຢົດລົງຍັງຊ້າໄປ ແທ້ທີ່ຈິງຢົດນ້ຳນັ້ນຈະຣະເຫີຍແຫ້ງໄປທັນທີ ແມ່ນສັນໃດ ຄວາມພໍໃຈ ຄວາມບໍ່ມັກ ຄວາມພໍໃຈແລະຄວາມບໍ່ພໍໃຈອັນເກີດຂຶ້ນແລ້ວແກ່ພິກຂຸອົງໃດອົງໜຶ່ງ ສັນນັ້ນຄືກັນ ຍ່ອມດັບໄປແນວທັນທີ ໂດຍບໍ່ຍາກແນວນີ້ອຸເປກຂາຍ່ອມດຳລົງໝັ້ນ

ອານົນ ນີ້ເຮົາຮຽກວ່າ ການຈະເລີນອິນຊີໃນ ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈອັນປະເສີດໃນອະຣິຍະວິໄນ

ອານົນ ການຈະເລີນອິນຊີອັນປະເສີດໃນອະຣິຍະວິໄນ ເປັນແນວນີ້ແລ

[໔໓໐] ພຣະເສຂະຜູ້ກຳລັງປະຕິບັດ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວ ຈຶ່ງເກີດຄວາມພໍໃຈ ເກີດຄວາມບໍ່ພໍໃຈ ແລະເກີດທັງຄວາມພໍໃຈແລະຄວາມບໍ່ພໍໃຈ ຍ້ອນຄວາມພໍໃຈ ຄວາມບໍ່ພໍໃຈ ຄວາມພໍໃຈແລະຄວາມບໍ່ພໍໃຈທີ່ເກີດຂຶ້ນແລ້ວນັ້ນ ພິກຂຸນັ້ນຈຶ່ງອິດອັດ ເບື່ອໜ່າຍ ລັງກຽດ

ຟັງສຽງທາງຫູແລ້ວ ฯລฯ

ດົມກິ່ນທາງດັງແລ້ວ ฯລฯ

ຊີມຣົດທາງລີ້ນແລ້ວ ฯລฯ

ຖືກຕ້ອງໂຜດຖັບພະທາງກາຍແລ້ວ ฯລฯ

ຮູ້ແຈ້ງທຳມາຣົມທາງໃຈແລ້ວ ຈຶ່ງເກີດຄວາມພໍໃຈ ເກີດຄວາມບໍ່ພໍໃຈ ແລະເກີດທັງຄວາມພໍໃຈແລະຄວາມບໍ່ພໍໃຈ ຍ້ອນຄວາມພໍໃຈ ຄວາມບໍ່ພໍໃຈ ຄວາມພໍໃຈແລະຄວາມບໍ່ພໍໃຈທີ່ເກີດຂຶ້ນແລ້ວນັ້ນ ພິກຂຸນັ້ນຈຶ່ງອິດອັດ ເບື່ອໜ່າຍ ລັງກຽດ

ອານົນ ພຣະເສຂະຜູ້ກຳລັງປະຕິບັດ ເປັນແນວນີ້ແລ

[໔໓໑] ພຣະອະຣິຍະຜູ້ຈະເລີນອິນຊີແລ້ວ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເຫັນຮູບທາງຕາແລ້ວ ຈຶ່ງເກີດຄວາມພໍໃຈ ເກີດຄວາມບໍ່ພໍໃຈແລະເກີດທັງຄວາມພໍໃຈແລະຄວາມບໍ່ພໍໃຈ

ຖ້າທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ໃນສິ່ງທີ່ປະຕິກູນວ່າ ເປັນສິ່ງທີ່ບໍ່ປະຕິກູນຢູ່[໑] ກໍມີຄວາມໝາຍຮູ້ໃນສິ່ງທີ່ປະຕິກູນນັ້ນວ່າ ເປັນສິ່ງທີ່ບໍ່ປະຕິກູນຢູ່

ຖ້າຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ໃນສິ່ງທີ່ບໍ່ປະຕິກູນວ່າ ເປັນສິ່ງທີ່ປະຕິກູນຢູ່ກໍມີຄວາມໝາຍຮູ້ໃນສິ່ງທີ່ບໍ່ປະຕິກູນນັ້ນວ່າ ເປັນສິ່ງທີ່ປະຕິກູນຢູ່[໑]

ຖ້າຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ໃນສິ່ງທີ່ປະຕິກູນ ແລະ ໃນສິ່ງທີ່ບໍ່ປະຕິກູນວ່າເປັນ

ສິ່ງທີ່ບໍ່ປະຕິກູນຢູ່ ກໍມີຄວາມໝາຍຮູ້ໃນສິ່ງທີ່ປະຕິກູນ ແລະ ສິ່ງທີ່ບໍ່ປະຕິກູນນັ້ນວ່າ ເປັນສິ່ງທີ່ບໍ່ປະຕິກູນຢູ່

ຖ້າຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ໃນສິ່ງທີ່ບໍ່ປະຕິກູນ ແລະໃ ນສິ່ງທີ່ປະຕິກູນວ່າເປັນສິ່ງທີ່ປະຕິກູນຢູ່ກໍມີຄວາມໝາຍຮູ້ໃນສິ່ງທີ່ບໍ່ປະຕິກູນ ແລະ ໃນສິ່ງທີ່ປະຕິກູນນັ້ນວ່າ ເປັນສິ່ງທີ່ປະຕິກູນຢູ່

ຖ້າຫວັງວ່າ ເຮົາເພິ່ງເວັ້ນສິ່ງທີ່ປະຕິກູນ ແລະ ສິ່ງທີ່ບໍ່ປະຕິກູນທັງສອງນັ້ນ ແລ້ວມີອຸເປກຂາ ມີສະຕິສຳປະຊັນຍະຢູ່ ກໍເປັນຜູ້ມີອຸເປກຂາ ມີສະຕິສຳປະຊັນຍະໃນສິ່ງທີ່ປະຕິກູນແລະໃນສິ່ງທີ່ບໍ່ປະຕິກູນນັ້ນຢູ່໌

[໔໖໘] ອີກປະການໜຶ່ງ ພິກຂຸຟັງສຽງທາງຫູແລ້ວ ຯລຯ

ພິກຂຸ ດົມກິ່ນ ທາງດັງແລ້ວ ຯລຯ
ພິກຂຸ ຊີມຣົດ ທາງລີ້ນແລ້ວ ຯລຯ
ພິກຂຸ ຖືກຕ້ອງໂຜດຖັບພະ ທາງກາຍແລ້ວ ຯລຯ

ພິກຂຸຮູ້ແຈ້ງທຳມາຣົມ ທາງໃຈແລ້ວ ຈຶ່ງເກີດຄວາມພໍໃຈ ເກີດຄວາມບໍ່ພໍໃຈ ແລະເກີດທັງຄວາມພໍໃຈແລະຄວາມບໍ່ພໍໃຈ ຖ້າທ່ານຍັງຫວັງວ່າເຮົາເພິ່ງມີຄວາມໝາຍຮູ້ ໃນສິ່ງທີ່ປະຕິກູນວ່າເປັນສິ່ງທີ່ບໍ່ປະຕິກູນຢູ່ ກໍມີຄວາມໝາຍຮູ້ໃນສິ່ງທີ່ປະຕິກູນນັ້ນວ່າ ເປັນສິ່ງທີ່ບໍ່ປະຕິກູນຢູ່

ຖ້າຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ໃນສິ່ງທີ່ບໍ່ປະຕິກູນວ່າ ເປັນສິ່ງທີ່ປະຕິກູນຢູ່ກໍມີຄວາມໝາຍຮູ້ໃນສິ່ງທີ່ບໍ່ປະຕິກູນນັ້ນວ່າ ເປັນສິ່ງທີ່ປະຕິກູນຢູ່

ຖ້າຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ໃນສິ່ງທີ່ປະຕິກູນ ແລະໃນສິ່ງທີ່ບໍ່ປະຕິກູນວ່າ ເປັນສິ່ງທີ່ບໍ່ປະຕິກູນຢູ່ກໍມີຄວາມໝາຍຮູ້ໃນສິ່ງທີ່ປະຕິກູນ ແລະ ສິ່ງທີ່ບໍ່ປະຕິກູນນັ້ນວ່າ ເປັນສິ່ງທີ່ບໍ່ປະຕິກູນຢູ່

ຖ້າຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ໃນສິ່ງທີ່ບໍ່ປະຕິກູນ ແລະໃນສິ່ງທີ່ປະຕິກູນວ່າເປັນສິ່ງທີ່ປະຕິກູນຢູ່ກໍມີຄວາມໝາຍຮູ້ໃນສິ່ງທີ່ບໍ່ປະຕິກູນ ແລະໃນສິ່ງທີ່ປະຕິກູນນັ້ນວ່າເປັນສິ່ງທີ່ປະຕິກູນຢູ່

ຖ້າຫວັງວ່າ ເຮົາເພິ່ງເວັ້ນສິ່ງທີ່ປະຕິກູນ ແລະ ສິ່ງທີ່ບໍ່ປະຕິກູນທັງສອງນັ້ນ ແລ້ວມີອຸເປກຂາ ມີສະຕິສຳປະຊັນຍະຢູ່ ກໍເປັນຜູ້ມີອຸເປກຂາ ມີສະຕິສຳປະຊັນຍະໃນສິ່ງທີ່ປະຕິກູນ ແລະໃນສິ່ງທີ່ບໍ່ປະຕິກູນນັ້ນຢູ່

ອານົນ ພຣະອະຣິຍະຜູ້ຈະເລີນອິນຊີແລ້ວ ເປັນແນວນີ້ແລ

[໔໖໙] ອານົນ ເຮົາສະແດງການຈະເລີນອິນຊີອັນປະເສີດ ໃນອະຣິຍະວິໄນໄວ້ແລ້ວ ສະ

ແດງພຣະເສຂະຜູ້ກຳລັງປະຕິບັດໄວ້ແລ້ວ ສະແດງພຣະອະຣິຍະຜູ້ຈະເລີນອິນຊີໄວ້ແລ້ວ ດ້ວຍປະການແນວນີ້ ກິດທີ່ສາດສະດາຜູ້ສະແຫວງຫາປະໂຫຍດເກື້ອກູນ ຜູ້ອະນຸເຄາະ ອາໄສຄວາມອະນຸເຄາະແລ້ວ ເພິ່ງເຮັດແກ່ສາວົກທັງຫຼາຍໄດ້ ເຮົາກໍໄດ້ເຮັດແກ່ທ່ານທັງຫຼາຍແລ້ວ

ອານົນ ນັ້ນເຫງົ້າໄມ້ ນັ້ນເຮືອນວ່າງ ທ່ານທັງຫຼາຍຈົ່ງເພ່ງຊານ ຢ່າໄດ້ຜະໝາດ ຢ່າໄດ້ເປັນຜູ້ເດືອດຮ້ອນໃນພາຍຫຼັງ ນີ້ ເປັນຄຳພ່ຳສອນຂອງເຮົາສຳລັບທ່ານທັງຫຼາຍ”

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະອານົນມີໃຈຍິນດີ ຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ອິນທະຣິຍະພາວະນາສູດທີ ໑໐ ຈົບ**

**ສະລາຍະຕະນະວັກທີ ໕ ຈົບ**

## ລວມພຣະສູດທີ ມີໃນວັກນີ້ ຄື

| | |
|---|---|
| ໑. ອະນາຖະປິນດິໂກວາທະສູດ | ໖. ສັນໂນວາທະສູດ |
| ໒. ປຸນໂນວາທະສູດ | ໗. ນັນທະໂກວາທະສູດ |
| ໓. ຈູລະຣາຫຸໂລວາທະສູດ | ໘. ສະສັກກະສູດ |
| ໔. ສະລາຍະຕະນະວິພັງຄະສູດ | ໙. ນະຄອນວິນເທີຍຍະສູດ |
| ໕. ປິນດະປາຕະປາຣິສຸດທິສູດ | ໑໐. ອິນທະຣິຍະພາວະນາສູດ |

**ອຸປະຣິປັນນາດ ຈົບ**